# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໘

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໘

## ມັດຊິມະນິກາຍມູລະປັນນາດ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໕໕

# ຄໍາປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທໍາມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈໍານວນ ໘໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກໍາຄ່າໃຊ້ຈ່າຍ ຈົນສໍາເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄໍາສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລໍາພັງພຽງອົງດຽວຢູ່ຫໍທໍາມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສໍາເລັດໄດ້ ໙ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໙ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສໍາເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສໍານວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນໍາເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄໍານໍາ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄໍາຜິດ ສໍານວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນໍາໃຫ້ລະມັດລະວັງໃນການນໍາໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອໍານວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນໍາໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນໍາເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທໍາຂອງອົງສົມເດັດ ພຣະສໍາມາສໍາພຸດທະເຈົ້າຈົງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໘

# ພຣະສຸດຕັນຕະປິດົກ

## ເຫຼັ້ມທີ ໔

## ມັດຊິມະນິກາຍມູລະປັນນາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ໑. ມູລະປະຣິຍາຍະວັກ

**ໝວດວ່າດ້ວຍມູນເຫດແຫ່ງທຳ**

## ໑. ມູລະປະຣິຍາຍະສູດ

### ວ່າດ້ວຍມູນເຫດແຫ່ງທຳ

[໑] ຂ້າພະເຈົ້າ[໑] ໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ເຫງົ້າໄມ້ຮັງໃຫຍ່ໃນ ສຸພະຄະວັນ ເຂດເມືອງ ອຸກກັດຖາ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ກໍທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດ ວ່າ "ພິກຂຸທັງຫຼາຍ ເຮົາຈັກສະແດງມູນເຫດແຫ່ງທຳທັງປວງ[໒] ແກ່ທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

---

໑ **ຂ້າພະເຈົ້າ** ໃນຕອນເລີ່ມຕົ້ນຂອງພຣະສູດນີ້ແລະພຣະສູດອື່ນ ໆ ໃນເຫລັ້ມນີ້ ໝາຍເຖິງພຣະອານົນ

໔ ຄຳວ່າ **ມູນເຫດແຫ່ງທຳທັງປວງ** ແປຈາກຄຳວ່າ ສັບພະທັມມະມູລະປະຣິຍາຍະ ມີອະທິບາຍສະເພາະຄຳດັ່ງນີ້ ຄຳວ່າ ມູນ ໃນທີ່ນີ້ໝາຍເຖິງເຫດທີ່ບໍ່ທົ່ວໄປ ຄຳວ່າ ເຫດ (ປະຣິຍາຍ) ໝາຍເຖິງເຫດສະໜາ ເຫດ ແລະ ວາຣະ ແຕ່ໃນທີ່ນີ້ໝາຍເຖິງເຫດ ຫຼື ເຫດສະໜາ ຄຳວ່າ ທຳທັງປວງ ໝາຍເຖິງປະຣິຍັດ ອະຣິຍະສັດ ສະມາທິ ປັນຍາ ປົກກະຕິ ສະພາວະ ສູນຍະຕາ ປຸນຍະ ອາບັດ ແລະໄຍຍະເປັນຕົ້ນ ແຕ່ໃນທີ່ນີ້ໝາຍເຖິງສະພາວະ ດັ່ງນັ້ນຄຳວ່າ ມູນເຫດແຫ່ງທຳທັງປວງ ຈຶ່ງໝາຍເຖິງ ເຫດສະໜາວ່າດ້ວຍ ເຫດໃຫ້ເກີດສະພາວະທັງປວງ (ມ.ມູ.ອ. ໑/໑/໑໗-໑໘)

## ກຳນົດພູມຕາມໄນທີ ໑ ວ່າດ້ວຍປຸຖຸຊົນ

[໒] "ພິກຂຸທັງຫຼາຍ ປຸຖຸຊົນ[໑] ໃນໂລກນີ້ ຜູ້ຍັງບໍ່ໄດ້ສະດັບ ບໍ່ໄດ້ພົບພຣະອະຣິຍະ[໒] ທັງຫຼາຍ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບຄຳແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ພົບສັດຕະບຸຣຸດ[໓] ທັງຫຼາຍ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບຄຳແນະນຳໃນ ທຳຂອງສັດຕະບຸຣຸດ ໝາຍຮູ້ປະຖະວີ[໔] (ດິນ) ໂດຍຄວາມເປັນປະຖະວີ ເມື່ອໝາຍຮູ້ປະຖະວີໂດຍຄວາມເປັນປະຖະວີ[໕] ແລ້ວກຳນົດໝາຍເຊິ່ງປະຖະວີ[໖] ກຳນົດໝາຍໃນປະຖະວີ ກຳນົດໝາຍນອກປະຖະວີ[໗] ກຳນົດໝາຍປະຖະວີວ່າເປັນຂອງເຮົາ ຍິນດີປະຖະວີ[໑]

---

໑ **ປຸຖຸຊົນ** ໝາຍເຖິງຄົນທີ່ຍັງມີກິເລດໜາ ທີ່ຮຽກແນວນີ້ຍ້ອນບຸກຄົນປະເພດນີ້ຍັງມີເຫດກໍ່ໃຫ້ເກີດກິເລດຢ່າງໜານານັບການ ປຸຖຸຊົນມີ ໒ ປະເພດ ຄື (໑) ອັນທະປຸຖຸຊົນ ຄົນທີ່ບໍ່ໄດ້ຮັບການສຶກສາອົບຮົມທາງຈິດ (໒) ກັນລະຍານະປຸຖຸຊົນ ຄົນທີ່ໄດ້ຮັບການສຶກສາອົບຮົມທາງຈິດແລ້ວ (ມ.ມູ.ອ. ໑/໒/໒໒, ທີ.ສີ.ອ. ໑/ກ/໕໗-໕໙)

໒ **ພຣະອະຣິຍະ** ໝາຍເຖິງພຣະພຸດທະເຈົ້າ ພຣະປັດເຈກພຸດທະເຈົ້າ ແລະພຣະພຸດທະສາວົກ ທີ່ຊື່ວ່າພຣະອະຣິຍະຍ້ອນເປັນຜູ້ໄກຈາກກິເລດ ບໍ່ດຳເນີນໄປໃນທາງເສື່ອມ ດຳເນີນໄປແຕ່ໃນທາງຈະເລີນ ເປັນຜູ້ທີ່ຊາວໂລກແລະເທວະໂລກຄວນດຳເນີນຕາມ (ມ.ມູ.ອ. ໑/໒/໒໒)

໓ **ສັດຕະບຸຣຸດ** ໂດຍທົ່ວໄປ ໝາຍເຖິງຄົນກະຕັນຍູກະຕະເວທີ ເປັນນັກປາດ ເປັນກັນລະຍາໜະມິດ ເປັນຜູ້ມີຄວາມພັກດີໝັ້ນຄົງ ກະທຳການຊ່ວຍເຫລືອຜູ້ຕົກທຸກໄດ້ຍາກ ດ້ວຍຄວາມເຕັມໃຈ ແຕ່ໃນທີ່ນີ້ ໝາຍເຖິງພຣະພຸດທະເຈົ້າ ພຣະປັດເຈກພຸດທະເຈົ້າ ແລະພຣະພຸດທະສາວົກ (ຂຸ.ຊາ. (ແປ) ໒ກ/ກ໗-ກ໙/໖໐໗, ມ.ມູ.ອ. ໑/໒/໒໒)

໔ **ປະຖະວີ** ມີ ໔ ຊະນິດ ຄື (໑) ລັກຂະໜະປະຖະວີ ເປັນສິ່ງທີ່ແຂງກະດ້າງ ຫຍາບສະເພາະຕົນໃນຕົວມັນເອງ (໒) ສສຳພານປະຖະວີ ເປັນສ່ວນແຫ່ງອະໄວຍະວະມີເຮົາເປັນຕົ້ນ ແລະວັດຖຸພາຍນອກມີໂລຫະເປັນຕົ້ນ ພ້ອມທັງຄຸນສົມບັດມີສີເປັນຕົ້ນ (໓) ອາຣັມມະນະປະຖະວີ ເປັນປະຖະວີທາດທີ່ນຳມາກຳນົດເປັນອາລົມຂອງປະຖະວີກະສິນ ນິມິດຕະປະຖະວີ ກໍຮຽກ (໔) ສຳມະຕິປະຖະວີ ເປັນປະຖະວີທາດທີ່ປະຖະວີເທວະດາມາເກີດໃນເທວະໂລກດ້ວຍອຳນາດປະຖະວີກະສິນແລະຊານ ໃນທີ່ນີ້ ປະຖະວີໝາຍເຖິງທັງ ໔ ຊະນິດ (ມ.ມູ.ອ. ໑/໒/໒ກ)

໕ **ໝາຍຮູ້ປະຖະວີໂດຍຄວາມເປັນປະຖະວີ** ໃນທີ່ນີ້ໝາຍເຖິງໝາຍຮູ້ແຜ່ນດິນນັ້ນດ້ວຍສັນຍາທີ່ວິປະຣິຕ ຄືກຳນົດໃຫ້ຕ່າງອອກໄປຈາກຄວາມເປັນຈິງໂດຍປະການຕ່າງ ໆ ດ້ວຍກິເລດເປັນເຫດລ້າຊ້າ ຄື ຕັນຫາ ມານະ ແລະທິດຖິ ທີ່ມີກຳລັງ (ມ.ມູ.ອ. ໑/໒/໒໗)

໖ **ກຳນົດໝາຍເຊິ່ງປະຖະວີ** ໝາຍເຖິງກຳນົດໝາຍດ້ວຍຕັນຫາ ມານະ ແລະທິດຖິວ່າ "ເຮົາເປັນດິນ ດິນເປັນຂອງເຮົາ, ຄົນອື່ນເປັນດິນ ດິນເປັນຂອງຄົນອື່ນ ຫຼື ອີກໄນໜຶ່ງ ໝາຍເຖິງກຳນົດໝາຍດ້ວຍອຳນາດຕັນຫາ ໃຫ້ເກີດສັນທະຣາຄະຕິດໃຈໃນເຮົາເປັນຕົ້ນຈົນເຖິງຕັ້ງຄວາມປາຖະໜາວ່າ "ດ້ວຍສິນຫຼືພົມມະຈັນນີ້ ຂໍໃຫ້ເຮົາມີເຮົານຸ່ມດຳສະນິດດີ, ກຳນົດໝາຍດ້ວຍອຳນາດມານະວ່າ "ເຮົາດີກວ່າ ເຮົາສະເໝີກັນ ຫຼືເຮົາຕ່ຳຕ້ອຍກວ່າ" ແລະກຳນົດໝາຍດ້ວຍອຳນາດທິດຖິ ຄື ຢຶດໝັ້ນວ່າເຮົາເປັນຊີວະ ໂດຍໄນວ່າ "ຊີວະກໍອັນນັ້ນ ສະຣີຣະກໍອັນນັ້ນ" (ມ.ມູ.ອ. ໑/໒/໒໗-໓໐)

໗ **ກຳນົດໝາຍໃນປະຖະວີ** ໝາຍເຖິງກຳນົດໝາຍດ້ວຍອຳນາດທິດຖິວ່າ "ມີເຮົາຢູ່ໃນດິນ ຫຼືເຮົາມີປລິໂພທີໃນດິນ ມີຜູ້ອື່ນຢູ່ໃນດິນ ຫຼືຜູ້ອື່ນມີປລິໂພດໃນດິນ" ຕາມໄນທີ່ວ່າ "ພິຈາລະນາເຫັນອັດຕາໃນອົງເປັນຕົ້ນ (ເບິ່ງ ຂຸ.ປ. ໓໑/໓໑໖/໒໑໐) ກຳນົດໝາຍນອກປະຖະວີ ໝາຍເຖິງກຳນົດໝາຍດ້ວຍອຳນາດທິດຖິວ່າ ຕົນຫຼືຄົນອື່ນພ້ອມທັງສັບພະສິ່ງລ້ວນແຕ່ເກີດຈາກດິນແຕ່ບໍ່ແມ່ນດິນຕາມລັດທິພົນໝັນຖວາດ (ລັດທິທີ່ເຊື່ອວ່າໂລກເກີດຈາກພົມ) ລັດທິອນຸກວາທະ (ລັດທິທີ່ເຊື່ອວ່າໂລກປະກອບດ້ວຍອະນູ) ຫຼືລັດທິອິສສຣວາດ (ລັດທິທີ່ເຊື່ອວ່າພຣະອິສວນເປັນຜູ້ສ້າງໂລກ) ແລ້ວເກີດຕັນຫາ ມານະໃນຕົນ ແລະບຸກຄົນອື່ນຕະຫຼອດເຖິງສັບພະສິ່ງນັ້ນ (ມ.ມູ.ອ. ໑/໒/໓໐,ມ.ມູ.ຕີກາ ໑/໒/໙໒-໙໓)

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້[2]"

ໝາຍຮູ້ອາໂປ (ນ້ຳ) ໂດຍຄວາມເປັນອາໂປ ເມື່ອໝາຍຮູ້ອາໂປໂດຍຄວາມເປັນອາໂປແລ້ວ ກຳນົດໝາຍເຊິ່ງອາໂປ ກຳນົດໝາຍໃນອາໂປ ກຳນົດໝາຍນອກອາໂປ ກຳນົດໝາຍອາໂປວ່າເປັນຂອງເຮົາ ຍິນດີອາໂປ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ເຕໂຊ (ໄຟ) ໂດຍຄວາມເປັນເຕໂຊ ເມື່ອໝາຍຮູ້ເຕໂຊໂດຍຄວາມເປັນເຕໂຊແລ້ວ ກຳນົດໝາຍເຊິ່ງເຕໂຊ ກຳນົດໝາຍໃນເຕໂຊ ກຳນົດໝາຍນອກເຕໂຊ ກຳນົດໝາຍເຕໂຊວ່າເປັນຂອງເຮົາ ຍິນດີເຕໂຊ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ວາໂຍ (ລົມ)ໂດຍຄວາມເປັນວາໂຍ ເມື່ອໝາຍຮູ້ວາໂຍໂດຍຄວາມເປັນວາໂຍແລ້ວ ກຳນົດໝາຍເຊິ່ງວາໂຍ ກຳນົດໝາຍໃນວາໂຍ ກຳນົດໝາຍນອກວາໂຍ ກຳນົດໝາຍວາໂຍວ່າເປັນຂອງເຮົາ ຍິນດີວາໂຍ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

[໓] ໝາຍຮູ້ພູຕະ[1] ໂດຍຄວາມເປັນພູຕະ ເມື່ອໝາຍຮູ້ພູຕະໂດຍຄວາມເປັນພູຕະແລ້ວ

---

໑ **ຍິນດີປະຖະວີ** ໝາຍເຖິງເພີດເພີນ ຍິນດີ ຕິດໃຈ ປະຖະວີດ້ວຍອຳນາດຕັນຫາແລະທິດຖິ ຄວາມຍິນດີປະຖະວີນັ້ນເອງ ຊື່ວ່າຍິນດີທຸກ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫລາຍ ເຮົາກ່າວວ່າ "ຜູ້ໃດຍິນດີປະຖະວີທາດ ຜູ້ນັ້ນຍິນດີທຸກ ຜູ້ໃດຍິນດີທຸກ ຜູ້ນັ້ນບໍ່ພົ້ນໄປຈາກທຸກ" (ມ.ມູ.ອ. ໑/໒/໓໑)

໒ **ບໍ່ໄດ້ກຳນົດຮູ້** ໝາຍເຖິງບໍ່ໄດ້ກຳນົດຮູ້ດ້ວຍປະຣິນຍາ ໓ ປະການ ຄື (໑) ຍາດປະຣິນຍາ ໄດ້ແກ່ ຮູ້ວ່າ "ນີ້ເປັນປະຖະວີທາດພາຍໃນ ນີ້ເປັນປະຖະວີທາດພາຍນອກ ນີ້ເປັນລັກສະນະ ກິດ ເຫດເກີດ ແລະ ທີ່ເກີດແຫ່ງປະຖະວີທາດ" ຫຼືໄດ້ແກ່ກຳນົດນາມແລະຮູບ (໒) ຕີຣະນະປະຣິນຍາ ໄດ້ແກ່ ພິຈາລະນາເຫັນວ່າ "ປະຖະວີທາດມີອາການ ໔໐ ຄື ອາການບໍ່ທ່ຽງ ເປັນທຸກ ເປັນໂຣກ" ເປັນຕົ້ນ ຫຼື ໄດ້ແກ່ ພິຈາລະນາກລາປະ (ຄວາມເປັນກຸ່ມກ້ອນ)ເປັນຕົ້ນ ພິຈາລະນາອະນຸໂລມະຍານເປັນທີ່ສຸດ (໓) ປະຫານະປະຣິນຍາ ໄດ້ແກ່ ເມື່ອພິຈາລະນາເຫັນຢ່າງນັ້ນແລ້ວ ຈຶ່ງລະສັນທະຣາຄະ (ຄວາມກຳໜັດດ້ວຍອຳນາດຄວາມພໍໃຈ) ໃນປະຖະວີທາດດ້ວຍອະຣະຫັດຕະຜົນ ຫຼື ໄດ້ແກ່ ຍານໃນອະຣິຍະມັກ ຍ້ອນປະຣິນຍາ ໓ ປະການນີ້ບໍ່ມີແກ່ປຸຖຸຊົນເຂົາຈຶ່ງກຳນົດໝາຍ ແລະ ຍິນດີປະຖະວີທາດ ອາໂປທາດ ເຕໂຊທາດ ແລະ ວາ ໂຍທາດ (ມ.ມູ.ອ. ໑/໒/໓໑-໓໔)

ກຳນົດໝາຍເຊິ່ງພູຕະ ກຳນົດໝາຍໃນພູຕະ ກຳນົດໝາຍນອກພູຕະ ກຳນົດໝາຍພູຕະວ່າເປັນຂອງເຮົາ ຍິນດີພູຕະ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ເທວະດາໂດຍຄວາມເປັນເທວະດາ ເມື່ອໝາຍຮູ້ເທວະດາໂດຍຄວາມເປັນເທວະດາແລ້ວ ກຳນົດໝາຍເຊິ່ງເທວະດາ ກຳນົດໝາຍໃນເທວະດາ ກຳນົດໝາຍນອກເທວະດາ ກຳນົດໝາຍເທວະດາວ່າເປັນຂອງເຮົາ ຍິນດີເທວະດາ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ປະຊາບໍດີ[໒] ໂດຍຄວາມເປັນປະຊາບໍດີ ເມື່ອໝາຍຮູ້ປະຊາບໍດີໂດຍຄວາມເປັນປະຊາບໍດີແລ້ວ ກຳນົດໝາຍເຊິ່ງປະຊາບໍດີ ກຳນົດໝາຍໃນປະຊາບໍດີ ກຳນົດໝາຍນອກປະຊາບໍດີ ກຳນົດໝາຍປະຊາບໍດີວ່າເປັນຂອງເຮົາ ຍິນດີປະຊາບໍດີ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ພົມ ໂດຍຄວາມເປັນພົມ ເມື່ອໝາຍຮູ້ພົມໂດຍຄວາມເປັນພົມແລ້ວ ກຳນົດໝາຍເຊິ່ງພົມ ກຳນົດໝາຍໃນພົມ ກຳນົດໝາຍນອກພົມ ກຳນົດໝາຍພົມວ່າເປັນຂອງເຮົາ ຍິນດີພົມ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ອາພັດສະຣະພົມ ໂດຍຄວາມເປັນອາພັດສະຣະພົມ ເມື່ອໝາຍຮູ້ອາພັດສະຣະພົມໂດຍຄວາມເປັນອາພັດສະຣະພົມແລ້ວ ກຳນົດໝາຍເຊິ່ງອາພັດສະຣະພົມ ກຳນົດໝາຍໃນອາພັດສະຣະພົມ ກຳນົດໝາຍນອກອາພັດສະຣະພົມ ກຳນົດໝາຍອາພັດສະຣະພົມວ່າ ເປັນຂອງເຮົາ ຍິນດີອາພັດສະຣະພົມ

---

໑ **ພູຕະ** ໝາຍເຖິງຂັນ ໕ ອະມະນຸດ ທາດ ສິ່ງທີ່ມີຢູ່ ພຣະຂີນາສົບ ສັດ ແລະ ຕົ້ນໄມ້ເປັນຕົ້ນ ແຕ່ໃນທີ່ນີ້ໝາຍເຖິງສັດທັງຫລາຍຜູ້ຢູ່ຕ່ຳກວ່າຊັ້ນຈາຕຸມະຫາຣາດ (ມ.ມູ.ອ. ໑/໓/໓໔)

໒ **ປະຊາບໍດີ** ໝາຍເຖິງຜູ້ຍິ່ງໃຫຍ່ກວ່າປະຊາຄືໝູ່ສັດ ໄດ້ແກ່ ມານຊື່ວ່າ ປະຊາບໍດີ ຍ້ອນປົກຄອງເທວະໂລກຊັ້ນປະຣະນິມມິດະວະສະວັຕດີ (ມ.ມູ.ອ. ໑/໓/໓໖)

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ສຸພະກິນຫະພົມ ໂດຍຄວາມເປັນສຸພະກິນຫະພົມ ເມື່ອໝາຍຮູ້ສຸພະກິນຫະພົມໂດຍຄວາມເປັນສຸພະກິນຫະພົມແລ້ວ ກຳນົດໝາຍເຊິ່ງສຸພະກິນຫະພົມ ກຳນົດໝາຍໃນສຸພະກິນຫະພົມ ກຳນົດໝາຍນອກສຸພະກິນຫະພົມ ກຳນົດໝາຍສຸພະກິນຫະພົມວ່າ ເປັນຂອງເຮົາ ຍິນດີສຸພະກິນຫະພົມ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ເວຫັບຜະລະພົມ ໂດຍຄວາມເປັນເວຫັບຜະລະພົມ ເມື່ອໝາຍຮູ້ເວຫັບຜະລະພົມໂດຍຄວາມເປັນເວຫັບຜະລະພົມແລ້ວ ກຳນົດໝາຍເຊິ່ງເວຫັບຜະລະພົມ ກຳນົດໝາຍໃນເວຫັບຜະລະພົມ ກຳນົດໝາຍນອກເວຫັບຜະລະພົມ ກຳນົດໝາຍເວຫັບຜະລະພົມວ່າ ເປັນຂອງເຮົາ ຍິນດີເວຫັບຜະລະພົມ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ອະພິພູສັດ[໑] ໂດຍຄວາມເປັນອະພິພູສັດ ເມື່ອໝາຍຮູ້ອະພິພູສັດໂດຍຄວາມເປັນອະພິພູສັດແລ້ວ ກຳນົດໝາຍເຊິ່ງອະພິພູສັດ ກຳນົດໝາຍໃນອະພິພູສັດ ກຳນົດໝາຍນອກອະພິພູສັດ ກຳນົດໝາຍອະພິພູສັດວ່າເປັນຂອງເຮົາ ຍິນດີອະພິພູສັດ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

[໔] ໝາຍຮູ້ອາກາສານັນຈາຍະຕະນະພົມ ໂດຍຄວາມເປັນອາກາສານັນຈາຍະຕະນະພົມ ເມື່ອໝາຍຮູ້ອາກາສານັນຈາຍະຕະນະພົມ ໂດຍຄວາມເປັນອາກາສານັນຈາຍະຕະນະພົມແລ້ວ ກຳນົດໝາຍເຊິ່ງອາກາສານັນຈາຍະຕະນະພົມ ກຳນົດໝາຍໃນອາກາສານັນຈາຍະຕະນະພົມ ກຳນົດໝາຍນອກອາກາສານັນຈາຍະຕະນະພົມ ກຳນົດໝາຍອາກາສານັນຈາຍະຕະນະພົມວ່າ ເປັນຂອງເຮົາ ຍິນດີອາກາສານັນຈາຍະຕະນະພົມ

---

໑ **ອະພິພູສັດ** ກັບ ອະສັນຍິສັດ ເປັນໄວພົດຂອງກັນແລະກັນ ໝາຍເຖິງສັດຜູ້ບໍ່ມີສັນຍາ ສະຖິດຢູ່ໃນຊັ້ນດຽວກັບເວຫັບຜະລະພົມ ບັງເກີດດ້ວຍອິລິຍາບົດໃດກໍສະຖິດຢູ່ດ້ວຍອິລິຍາບົດນັ້ນຕາບສິ້ນອາຍຸໄຂ (ມ.ມູ.ອ. ໑/໖/໖໗)

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ວິນຍານັນຈາຍະຕະນະພົມ ໂດຍຄວາມເປັນວິນຍານັນຈາຍະຕະນະພົມ ເມື່ອໝາຍຮູ້ວິນຍານັນຈາຍະຕະນະພົມ ໂດຍຄວາມເປັນວິນຍານັນຈາຍະຕະນະພົມແລ້ວ ກຳນົດໝາຍເຊິ່ງວິນຍານັນຈາຍະຕະນະພົມ ກຳນົດໝາຍໃນວິນຍານັນຈາຍະຕະນະພົມ ກຳນົດໝາຍນອກວິນຍານັນຈາຍະຕະນະພົມ ກຳນົດໝາຍວິນຍານັນຈາຍະຕະນະພົມວ່າເປັນຂອງເຮົາ ຍິນດີວິນຍານັນຈາຍະຕະນະພົມ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ອາກິນຈັນຍາຍະຕະນະພົມ ໂດຍຄວາມເປັນອາກິນຈັນຍາຍະຕະນະພົມ ເມື່ອໝາຍຮູ້ອາກິນຈັນຍາຍະຕະນະພົມ ໂດຍຄວາມເປັນອາກິນຈັນຍາຍະຕະນະພົມແລ້ວ ກຳນົດໝາຍເຊິ່ງອາກິນຈັນຍາຍະຕະນະພົມ ກຳນົດໝາຍໃນອາກິນຈັນຍາຍະຕະນະພົມ ກຳນົດໝາຍນອກອາກິນຈັນຍາຍະຕະນະພົມ ກຳນົດໝາຍອາກິນຈັນຍາຍະຕະນະພົມວ່າເປັນຂອງເຮົາ ຍິນດີອາກິນຈັນຍາຍະຕະນະພົມ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ເນວະສັນຍານາສັນຍາຍະຕະນະພົມ ໂດຍຄວາມເປັນເນວະສັນຍານາສັນຍາຍະຕະນະພົມ ເມື່ອໝາຍຮູ້ເນວະສັນຍານາສັນຍາຍະຕະນະພົມ ໂດຍຄວາມເປັນເນວະສັນຍານາສັນຍາຍະຕະນະພົມແລ້ວ ກຳນົດໝາຍເຊິ່ງເນວະສັນຍານາສັນຍາຍະຕະນະພົມ ກຳນົດໝາຍໃນເນວະສັນຍານາສັນຍາຍະຕະນະພົມ ກຳນົດໝາຍນອກເນວະສັນຍານາສັນຍາຍະຕະນະພົມ ກຳນົດໝາຍເນວະສັນຍານາສັນຍາຍະຕະນະພົມວ່າເປັນຂອງເຮົາ ຍິນດີເນວະສັນຍານາສັນຍາຍະຕະນະພົມ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

[໔] ໝາຍຮູ້ຮູບທີ່ຕົນເຫັນ[໑] ໂດຍຄວາມເປັນຮູບທີ່ຕົນເຫັນ ເມື່ອໝາຍຮູ້ຮູບທີ່ຕົນເຫັນ[໑] ໂດຍຄວາມເປັນຮູບທີ່ຕົນເຫັນແລ້ວ ກຳນົດໝາຍເຊິ່ງຮູບທີ່ຕົນເຫັນ ກຳນົດໝາຍໃນຮູບທີ່ຕົນເຫັນ ກຳນົດໝາຍນອກຮູບທີ່ຕົນເຫັນ ກຳນົດໝາຍຮູບທີ່ຕົນເຫັນວ່າເປັນຂອງເຮົາ ຍິນດີຮູບທີ່ຕົນເຫັນ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ “ຍ້ອນເຂົາບໍ່ໄດ້ກຳນົດຮູ້”

ໝາຍຮູ້ສຽງທີ່ຕົນໄດ້ຍິນ[໔] ໂດຍຄວາມເປັນສຽງທີ່ຕົນໄດ້ຍິນ ເມື່ອໝາຍຮູ້ສຽງທີ່ຕົນ ໄດ້ຍິນໂດຍຄວາມເປັນສຽງທີ່ຕົນໄດ້ຍິນແລ້ວ ກຳນົດໝາຍເຊິ່ງສຽງທີ່ຕົນໄດ້ຍິນ ກຳນົດໝາຍໃນສຽງທີ່ຕົນໄດ້ຍິນ ກຳນົດໝາຍນອກສຽງທີ່ຕົນໄດ້ຍິນ ກຳນົດໝາຍສຽງທີ່ຕົນໄດ້ຍິນວ່າ ເປັນຂອງເຮົາ ຍິນດີສຽງທີ່ຕົນໄດ້ຍິນ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ “ຍ້ອນເຂົາບໍ່ໄດ້ກຳນົດຮູ້”

ໝາຍຮູ້ອາລົມທີ່ຕົນຮູ້[໕] ໂດຍຄວາມເປັນອາລົມທີ່ຕົນຮູ້ ເມື່ອໝາຍຮູ້ ອາລົມທີ່ຕົນຮູ້ໂດຍຄວາມເປັນອາລົມທີ່ຕົນຮູ້ແລ້ວ ກຳນົດໝາຍເຊິ່ງອາລົມ ທີ່ຕົນຮູ້ ກຳນົດໝາຍໃນອາລົມທີ່ຕົນຮູ້ ກຳນົດໝາຍນອກອາລົມທີ່ຕົນຮູ້ ກຳນົດໝາຍອາລົມທີ່ຕົນຮູ້ວ່າເປັນຂອງເຮົາ ຍິນດີອາລົມທີ່ຕົນຮູ້

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ “ຍ້ອນເຂົາບໍ່ໄດ້ກຳນົດຮູ້”

ໝາຍຮູ້ອາລົມທີ່ຕົນຮູ້ແຈ້ງ[໖]ໂດຍຄວາມເປັນອາລົມທີ່ຕົນຮູ້ແຈ້ງ ເມື່ອໝາຍຮູ້ອາລົມທີ່ຕົນຮູ້ແຈ້ງໂດຍຄວາມເປັນອາລົມທີ່ຕົນຮູ້ແຈ້ງແລ້ວ ກຳນົດໝາຍເຊິ່ງອາລົມທີ່ຕົນຮູ້ແຈ້ງ ກຳນົດໝາຍໃນອາລົມທີ່ຕົນຮູ້ແຈ້ງ ກຳນົດໝາຍນອກອາລົມທີ່ຕົນຮູ້ແຈ້ງ ກຳນົດໝາຍອາລົມທີ່ຕົນຮູ້ແຈ້ງວ່າເປັນຂອງເຮົາ ຍິນດີອາລົມທີ່ຕົນຮູ້ແຈ້ງ

ຂໍ້ນັ້ນຍ້ອນເຫດໃດ
ເຮົາກ່າວວ່າ “ຍ້ອນເຂົາບໍ່ໄດ້ກຳນົດຮູ້”

[ຜ] ໝາຍຮູ້ຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ໂດຍຄວາມເປັນອັນດຽວກັນ ເມື່ອໝາຍຮູ້ຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ໂດຍຄວາມເປັນອັນດຽວກັນແລ້ວ ກຳນົດໝາຍເຊິ່ງຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ກຳນົດໝາຍໃນຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ກຳນົດໝາຍນອກຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ກຳນົດໝາຍຄວາມທີ່ຈິດທີ່ເປັນຊານສະມາບັດ ເປັນອັນດຽວກັນວ່າເປັນຂອງເຮົາ ຍິນດີຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ “ຍ້ອນເຂົາບໍ່ໄດ້ກຳນົດຮູ້”

ໝາຍຮູ້ຄວາມທີ່ການຈິດຕ່າງກັນ ໂດຍຄວາມເປັນຂອງຕ່າງກັນ ເມື່ອໝາຍຮູ້ຄວາມທີ່ການຈິດຕ່າງກັນໂດຍຄວາມເປັນຂອງຕ່າງກັນແລ້ວ ກຳນົດໝາຍເຊິ່ງຄວາມທີ່ການຈິດຕ່າງກັນ ກຳນົດໝາຍໃນຄວາມທີ່ການຈິດຕ່າງກັນ ກຳນົດໝາຍນອກຄວາມທີ່ການຈິດຕ່າງກັນ ກຳນົດໝາຍຄວາມທີ່ການຈິດຕ່າງກັນວ່າເປັນຂອງເຮົາ ຍິນດີຄວາມທີ່ການຈິດຕ່າງກັນ

ຂໍ້ນັ້ນຍ້ອນເຫດໃດ
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ສັກກາຍະ[1] ທັງປວງໂດຍຄວາມເປັນສັກກາຍະທັງປວງ ເມື່ອໝາຍຮູ້ສັກກາຍະປວງໂດຍຄວາມເປັນສັກກາຍະທັງປວງແລ້ວ ກຳນົດໝາຍເຊິ່ງສັກກາຍະທັງປວງ ກຳນົດໝາຍໃນສັກກາຍະທັງປວງ ກຳນົດໝາຍນອກສັກກາຍະທັງປວງ ກຳນົດໝາຍສັກກາຍະ ທັງປວງວ່າເປັນຂອງເຮົາ ຍິນດີສັກກາຍະທັງປວງ

ຂໍ້ນັ້ນຍ້ອນເຫດໃດ
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

ໝາຍຮູ້ນິບພານ[2] ໂດຍຄວາມເປັນນິບພານ ເມື່ອໝາຍຮູ້ນິບພານໂດຍຄວາມເປັນນິບພານແລ້ວ ກຳນົດໝາຍເຊິ່ງນິບພານ ກຳນົດໝາຍໃນນິບພານ ກຳນົດໝາຍນອກນິບພານ ກຳນົດໝາຍນິບພານວ່າເປັນຂອງເຮົາ ຍິນດີນິບພານ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາບໍ່ໄດ້ກຳນົດຮູ້"

**ກຳນົດພູມຕາມໄນທີ ໑ ວ່າດ້ວຍປຸຖຸຊົນ ຈົບ**

## ກຳນົດພູມຕາມໄນທີ ໒ ວ່າດ້ວຍເສຂະບຸກຄົນ

[໗] ພິກຂຸທັງຫຼາຍ ພິກຂຸໃດ ຍັງເປັນເສຂະບຸກຄົນ[3] ບໍ່ໄດ້ບັນລຸອະຣະຫັດຕະຜົນ ປາຖະ

---

໑ **ສັກກາຍະ** ໝາຍເຖິງອຸປາທານຂັນ ໕ (ຄື ຮົບ ເວທະນາ ສັນຍາ ສັງຂານ ວິນຍານ) (ທີ.ປາ.ອ. ໓໐໕/໑໗໖, ຂຸ.ມ.ອ. ໑໓/໑໖໓)

໒ **ນິບພານ** ໃນທີ່ນີ້ໝາຍເຖິງນິບພານທີ່ປຸຖຸຊົນເຂົ້າໃຈຜິດ ດ້ວຍອຳນາດຕັນຫາ ມານະ ແລະ ທິດຖິ ຄື ເຂົ້າໃຈວ່າ "ອັດຕາທີ່ພັ່ງບພ້ອມ ພຽບພ້ອມ ບຳເລີດ້ວຍກາມມະຄຸນ ໕ ເປັນນິບພານໃນປັດຈຸບັນ, ນິບພານເປັນອັດຕາ ອັດຕາເປັນຢ່າງອື່ນຈາກນິບພານ ຄວາມສຸກເປັນນິບພານ ຫຼື ນິບພານເປັນຂອງເຮົາ" (ມ.ມູ.ອ. ໑/໖/໔໒, ມູ.ມູ. ຕີກາ ໑/໖/໑໑໓)

໓ **ເສຂະບຸກຄົນ** ໝາຍເຖິງບຸກຄົນຜູ້ທີ່ຍັງຕ້ອງສຶກສາ ໓ ຈຳພວກ ໄດ້ແກ່ ພຣະໂສດາບັນ ພຣະສະກະທາຄາມີ ແລະ ພຣະອະນາຄາມີຜູ້ຍັງຕ້ອງເຝິກອົບຮົມໃນໄຕຣສິກຂາ ຄື (໑) ອະທິສິລສິກຂາ ເຝິກອົບຮົມໃນເລື້ອງສິນ (໒) ອະທິຈິດຕະ

ໝາທຳເປັນແດນກະເສມຈາກໂຍຄະອັນປະເສີດຢູ່ ແມ່ນພິກຂຸນັ້ນກໍຮູ້ຍິ່ງປະຖະວີ ໂດຍຄວາມເປັນປະຖະວີ[໑] ເມື່ອຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີແລ້ວ ຢ່າກຳນົດໝາຍເຊິ່ງປະຖະວີ ຢ່າກຳນົດໝາຍໃນປະຖະວີ ຢ່າກຳນົດໝາຍນອກປະຖະວີ ຢ່າກຳນົດໝາຍປະຖະວີວ່າ ເປັນຂອງເຮົາ ຢ່າຍິນດີປະຖະວີ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາຄວນກຳນົດຮູ້"

ฯລฯ ຮູ້ຍິ່ງອາໂປ ฯລฯ ເຕໂຊ ฯລฯ ວາໂຍ ฯລฯ ພູຕະ ฯລฯ ເທວະດາ ฯລฯ ປະຊາບໍດີ ฯລฯ ພົມ ฯລฯ ອາພັດສະຣະພົມ ฯລฯ ສຸພະກິນຫະພົມ ฯລฯ ເວຫັບຜະລະພົມ ฯລฯ ອະພິພູສັດ ฯລฯ ອາກາສານັນຈາຍະຕະນະພົມ ฯລฯ ວິນຍານັນຈາຍະຕະນະພົມ ฯລฯ ອາກິນຈັນຍາຍະຕະນະພົມ ฯລฯ ເນວະສັນຍານາສັນຍາຍະຕະນະພົມ ฯລฯ ຮູບທີ່ຕົນເຫັນ ฯລฯ ສຽງທີ່ຕົນໄດ້ຍິນ ฯລฯ ອາລົມ ທີ່ຕົນຮູ້ ฯລฯ ອາລົມທີ່ຕົນຮູ້ແຈ້ງ ฯລฯ ຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ฯລฯ ຄວາມທີ່ການຈິດຕ່າງກັນ ฯລฯ ສັກກາຍະທັງປວງ ฯລฯ ຮູ້ຍິ່ງນິບພານໂດຍຄວາມເປັນນິບພານ

ເມື່ອຮູ້ຍິ່ງນິບພານໂດຍຄວາມເປັນນິບພານແລ້ວ ຢ່າກຳນົດໝາຍເຊິ່ງນິບພານ ຢ່າກຳນົດໝາຍໃນນິບພານ ຢ່າກຳນົດໝາຍນອກນິບພານ ຢ່າກຳນົດໝາຍນິບພານວ່າ ເປັນຂອງເຮົາ ຢ່າຍິນດີນິບພານ

ຂໍ້ນັ້ນຍ້ອນເຫດໃດ?
ເຮົາກ່າວວ່າ "ຍ້ອນເຂົາຄວນກຳນົດຮູ້"

**ກຳນົດພູມຕາມໄນທີ ໘ ວ່າດ້ວຍເສຂະບຸກຄົນ ຈົບ**

---

ສິກຂາເຝິກອົບຮົມໃນເລື້ອງຈິດ (ສະມາທິ) (໓) ອະທິປັນຍາສິກຂາ ເຝິກອົບຮົມໃນເລື້ອງປັນຍາ (ມ.ມູ.ອ. ໑/ໆ/໔໔, ອັງ.ຕິກະ. (ແປ) ໔໐/໗໖/໓໑໘)

໑ **ຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີ** ໝາຍເຖິງຮູ້ດ້ວຍສັນຍາທີ່ແຕກຕ່າງຈາກປຸຖຸຊົນ ຫຼື ຮູ້ດ້ວຍຍານອັນພິເສດຍິ່ງ ກ່າວຄືຍາດປະຣິນຍາ ຕີຣະນະປະຣິນຍາ ແລະ ປະຫານະປະຣິນຍາ ມີຄຳອະທິບາຍວ່າ ເມື່ອປ່ອຍວາງຄວາມເປັນປະຖະວີຢ່າງນີ້ ຍ່ອມຮູ້ຍິ່ງປະຖະວີນັ້ນວ່າ "ບໍ່ທ່ຽງ" ແດ່ ວ່າ "ເປັນທຸກ" ແດ່ ວ່າ "ເປັນອະນັດຕາ" ແດ່ (ມ.ມູ.ອ. ໑/ໆ/໔໕-໔໖, ມູ.ມູ. ຕີກາ ໑/ໆ/໑໑ໆ)

## ກຳນົດພູມຕາມໄນທີ ໓ ວ່າດ້ວຍພຣະຂີນາສົບ

[໗] ພິກຂຸທັງຫຼາຍ ພິກຂຸໃດ ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ[໑] ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດ[໒] ແລ້ວ ລຸດພົ້ນຍ້ອນຮູ້ໂດຍຊອບ ແມ່ນພິກຂຸນັ້ນ ກໍຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີ ເມື່ອຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີແລ້ວ ບໍ່ກຳນົດໝາຍເຊິ່ງປະຖະວີ ບໍ່ກຳນົດໝາຍໃນປະຖະວີ ບໍ່ກຳນົດໝາຍນອກປະຖະວີ ບໍ່ກຳນົດໝາຍປະຖະວີວ່າ ເປັນຂອງເຮົາ ບໍ່ຍິນດີປະຖະວີ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນເຂົາກຳນົດຮູ້ແລ້ວ"

ฯລฯ ຮູ້ຍິ່ງອາໂປ ฯລฯ ເຕໂຊ ฯລฯ ວາໂຍ ฯລฯ ພູຕະ ฯລฯ ເທວະດາ ฯລฯ ປະຊາບໍດີ ฯລฯ ພົມ ฯລฯ ອາພັດສະຣະພົມ ฯລฯ ສຸພະກິນຫະພົມ ฯລฯ ເວຫັບຜະລະພົມ ฯລฯ ອະພິພູສັດ ฯລฯ ອາກາສານັນຈາຍະຕະນະພົມ ฯລฯ ວິນຍານັນຈາຍະຕະນະພົມ ฯລฯ ອາກິນຈັນຍາຍະຕະນະພົມ ฯລฯ ເນວະສັນຍານາສັນຍາຍະຕະນະພົມ ฯລฯ ຮູບທີ່ຕົນເຫັນ ฯລฯ ສຽງທີ່ຕົນໄດ້ຍິນ ฯລฯ ອາລົມ ທີ່ຕົນຮູ້ ฯລฯ ອາລົມທີ່ຕົນຮູ້ແຈ້ງ ฯລฯ ຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ฯລฯ ຄວາມທີ່ການຈິດຕ່າງກັນ ฯລฯ ສັກກາຍະທັງປວງ ฯລฯ ຮູ້ຍິ່ງນິບພານໂດຍຄວາມເປັນນິບພານ ເມື່ອຮູ້ຍິ່ງນິບພານໂດຍຄວາມເປັນນິບພານແລ້ວ ບໍ່ກຳນົດໝາຍເຊິ່ງນິບພານ ບໍ່ກຳນົດໝາຍໃນນິບພານ ບໍ່ກຳນົດໝາຍນອກນິບພານ ບໍ່ກຳ ນົດໝາຍນິບພານວ່າເປັນຂອງເຮົາ ບໍ່ຍິນດີນິບພານ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນເຂົາກຳນົດຮູ້ແລ້ວ"

**ກຳນົດພູມຕາມໄນທີ ໓ ວ່າດ້ວຍພຣະຂີນາສົບ ຈົບ**

## ກຳນົດພູມຕາມໄນທີ ໔ ວ່າ ດ້ວຍພຣະຂີນາສົບ

[໘] ພິກຂຸທັງຫຼາຍ ພິກຂຸໃດ ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດ

---

໑ **ຢູ່ຈົບພົມມະຈັນແລ້ວ** ໝາຍເຖິງຢູ່ຈົບທຳເປັນເຄື່ອງຢູ່ຮ່ວມກັບຄູແດ່ ທຳເປັນເຄື່ອງຢູ່ຮ່ວມຄື ອະຣິຍະມັກແດ່ ທຳເປັນເຄື່ອງຢູ່ຂອງພຣະອະຣິຍະ ໑໐ ປະການແດ່ (ມ.ມູ.ອ. ໑/໗/໕໗)

໒ **ສິ້ນພະວະສັງໂຍດແລ້ວ** ໝາຍເຖິງສັງໂຍດ ໑໐ ປະການ ຄື (໑) ກາມລາຄະ (໒) ປະຕິຄະ (໓) ມານະ (໔) ທິດຖິ (໕) ວິຈິກິດສາ (໖) ສີລັບພະຕະປະຣາມາສ (໗) ພາວະຣາຄະ (໘) ອິດສາ (໙) ມັດສະຣິຍະ (໑໐) ອະວິດຊາ ສັງໂຍດເຫລົ່ານີ້ ຮຽກວ່າ ພະວະສັງໂຍດ ຍ້ອນຜູກມັດໝູ່ສັດໄວ້ໃນ ພົບນ້ອຍ ພົບໃຫຍ່ (ມ.ມູ.ອ. ໑/໗/໕໗)

ທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຊອບ ແມ່ນພິກຂຸນັ້ນ ກໍຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີ ເມື່ອຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີແລ້ວ ບໍ່ກຳນົດໝາຍເຊິ່ງປະຖະວີ ບໍ່ກຳນົດໝາຍໃນປະຖະວີ ບໍ່ກຳນົດໝາຍນອກປະຖະວີ ບໍ່ກຳນົດໝາຍປະຖະວີວ່າເປັນຂອງເຮົາ ບໍ່ຍິນດີປະຖະວີ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນເຂົາປາສະຈາກຣາຄະ ເນື່ອງຈາກຣາຄະສິ້ນໄປ"

ฯລฯ ຮູ້ຍິ່ງອາໂປ ฯລฯ ເຕໂຊ ฯລฯ ວາໂຍ ฯລฯ ພູຕະ ฯລฯ ເທວະດາ ฯລฯ ປະຊາບໍດີ ฯລฯ ພົມ ฯລฯ ອາພັດສະຣະພົມ ฯລฯ ສຸພະກິນຫະພົມ ฯລฯ ເວຫັບຜະລະພົມ ฯລฯ ອະພິພູສັດ ฯລฯ ອາກາສານັນຈາຍະຕະນະພົມ ฯລฯ ວິນຍານັນຈາຍະຕະນະພົມ ฯລฯ ອາກິນຈັນຍາຍະຕະນະພົມ ฯລฯ ເນວະສັນຍານາສັນຍາຍະຕະນະພົມ ฯລฯ ຮູບທີ່ຕົນເຫັນ ฯລฯ ສຽງທີ່ຕົນໄດ້ຍິນ ฯລฯ ອາລົມທີ່ຕົນຮູ້ ฯລฯ ອາລົມທີ່ຕົນຮູ້ແຈ້ງ ฯລฯ ຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ฯລฯ ຄວາມທີ່ກາມຈິດຕ່າງກັນ ฯລฯ ສັກກາຍະທັງປວງ ฯລฯ ຮູ້ຍິ່ງນິບພານໂດຍຄວາມເປັນນິບພານ ເມື່ອຮູ້ຍິ່ງນິບພານໂດຍຄວາມເປັນນິບພານແລ້ວບໍ່ກຳນົດໝາຍເຊິ່ງນິບພານ ບໍ່ກຳນົດໝາຍໃນນິບພານ ບໍ່ກຳນົດໝາຍນອກນິບພານ ບໍ່ກຳນົດໝາຍນິບພານວ່າເປັນຂອງເຮົາ ບໍ່ຍິນດີນິບພານ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນເຂົາປາສະຈາກຣາຄະ ເນື່ອງຈາກຣາຄະສິ້ນໄປ"

**ກຳນົດພູມຕາມໄນທີ ໔ ວ່າດ້ວຍພຣະຂີນາສົບ ຈົບ**

## ກຳນົດພູມຕາມໄນທີ ໕ ວ່າດ້ວຍພຣະຂີນາສົບ

[໑໐] ພິກຂຸທັງຫຼາຍ ພິກຂຸໃດ ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຊອບ ແມ່ນພິກຂຸນັ້ນກໍຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີ ເມື່ອຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີແລ້ວ ບໍ່ກຳນົດໝາຍເຊິ່ງປະຖະວີ ບໍ່ກຳນົດໝາຍໃນປະຖະວີ ບໍ່ກຳນົດໝາຍນອກປະຖະວີ ບໍ່ກຳນົດໝາຍປະຖະວີວ່າ ເປັນຂອງເຮົາ ບໍ່ຍິນດີປະຖະວີ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນເຂົາປາສະຈາກໂທສະ ເນື່ອງຈາກໂທສະສິ້ນໄປ"

ฯລฯ ຮູ້ຍິ່ງອາໂປ ฯລฯ ເຕໂຊ ฯລฯ ວາໂຍ ฯລฯ ພູຕະ ฯລฯ ເທວະດາ ฯລฯ ປະຊາບໍດີ ฯລฯ ພົມ ฯລฯ ອາພັດສະຣະພົມ ฯລฯ ສຸພະກິນຫະພົມ ฯລฯ ເວຫັບຜະລະພົມ

ໆລໆ ອະພິພູສັດ ໆລໆ ອາກາສານັນຈາຍະຕະນະພົມ ໆລໆ ວິນຍານັນຈາຍະຕະນະພົມ ໆລໆ ອາກິນຈັນຍາຍະຕະນະພົມ ໆລໆ ເນວະສັນຍານາສັນຍາຍະຕະນະພົມ ໆລໆ ຮູບທີ່ຕົນເຫັນ ໆລໆ ສຽງທີ່ຕົນໄດ້ຍິນ ໆລໆ ອາລົມ ທີ່ຕົນຮູ້ ໆລໆ ອາລົມທີ່ຕົນຮູ້ແຈ້ງ ໆລໆ ຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ໆລໆ ຄວາມທີ່ການຈິດຕ່າງກັນ ໆລໆ ສັກກາຍະທັງປວງ ໆລໆ ຮູ້ຍິ່ງນິບພານໂດຍຄວາມເປັນນິບພານ ເມື່ອຮູ້ຍິ່ງນິບພານໂດຍຄວາມເປັນນິບພານແລ້ວບໍ່ກຳນົດໝາຍເຊິ່ງນິບພານ ບໍ່ກຳນົດໝາຍໃນນິບພານ ບໍ່ກຳນົດໝາຍນອກນິບພານ ບໍ່ກຳນົດໝາຍນິບພານວ່າເປັນຂອງເຮົາ ບໍ່ຍິນດີນິບພານ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນເຂົາປາສະຈາກໂທສະ ເນື່ອງຈາກໂທສະສິ້ນໄປ"

**ກຳນົດພູມຕາມໄນທີ ໕ ວ່າດ້ວຍພຣະຂີນາສົບ ຈົບ**

## ກຳນົດພູມຕາມໄນທີ ໖ ວ່າດ້ວຍພຣະຂີນາສົບ

[໑໑] ພິກຂຸທັງຫຼາຍ ພິກຂຸໃດ ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຊອບ ແມ່ນພິກຂຸນັ້ນ ກໍຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີ ເມື່ອຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີແລ້ວ ບໍ່ກຳນົດໝາຍເຊິ່ງປະຖະວີ ບໍ່ກຳນົດໝາຍໃນປະຖະວີ ບໍ່ກຳນົດໝາຍນອກປະຖະວີ ບໍ່ກຳນົດໝາຍປະຖະວີວ່າເປັນຂອງເຮົາ ບໍ່ຍິນດີປະຖະວີ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນເຂົາປາສະຈາກໂມຫະ ເນື່ອງຈາກໂມຫະສິ້ນໄປ"

ໆລໆ ຮູ້ຍິ່ງອາໂປ ໆລໆ ເຕໂຊ ໆລໆ ວາໂຍ ໆລໆ ພູຕະ ໆລໆ ເທວະດາ ໆລໆ ປະຊາບໍດີ ໆລໆ ພົມ ໆລໆ ອາພັດສະຣະພົມ ໆລໆ ສຸພະກິນຫະພົມ ໆລໆ ເວຫັບຜະລະພົມ ໆລໆ ອະພິພູສັດ ໆລໆ ອາກາສານັນຈາຍະຕະນະພົມ ໆລໆ ວິນຍານັນຈາຍະຕະນະພົມ ໆລໆ ອາກິນຈັນຍາຍະຕະນະພົມ ໆລໆ ເນວະສັນຍານາສັນຍາຍະຕະນະພົມ ໆລໆ ຮູບທີ່ຕົນເຫັນ ໆລໆ ສຽງທີ່ຕົນໄດ້ຍິນ ໆລໆ ອາລົມ ທີ່ຕົນຮູ້ ໆລໆ ອາລົມທີ່ຕົນຮູ້ແຈ້ງ ໆລໆ ຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ໆລໆ ຄວາມທີ່ການຈິດຕ່າງກັນ ໆລໆ ສັກກາຍະທັງປວງ ໆລໆ ຮູ້ຍິ່ງນິບພານໂດຍຄວາມເປັນນິບພານ ເມື່ອຮູ້ຍິ່ງນິບພານໂດຍຄວາມເປັນນິບພານແລ້ວບໍ່ກຳນົດໝາຍເຊິ່ງນິບພານ ບໍ່ກຳນົດໝາຍໃນນິບພານ ບໍ່ກຳນົດໝາຍນອກນິບພານ ບໍ່ກຳນົດໝາຍນິບພານວ່າເປັນຂອງເຮົາ ບໍ່ຍິນດີນິບພານ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນເຂົາປາສະຈາກໂມຫະ ເນື່ອງຈາກໂມຫະສິ້ນໄປ"

**ກຳນົດພູມຕາມໄນທີ ໖ ວ່າດ້ວຍພຣະຂີນາສົບ ຈົບ**

## ກຳນົດພູມຕາມໄນທີ ໗ ວ່າດ້ວຍພຣະຕະຖາຄົດເຈົ້າ

[໑໘] ພິກຂຸທັງຫຼາຍ ແມ່ນຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ ກໍຮູ້ຍິ່ງປະຖະວີ ໂດຍ ຄວາມເປັນປະຖະວີ ເມື່ອຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີແລ້ວ ບໍ່ກຳນົດໝາຍເຊິ່ງປະຖະວີ ບໍ່ກຳນົດໝາຍໃນປະຖະວີ ບໍ່ກຳນົດໝາຍນອກປະຖະວີ ບໍ່ກຳນົດໝາຍປະຖະວີວ່າ ເປັນຂອງເຮົາ ບໍ່ຍິນດີປະຖະວີ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນຕະຖາຄົດ ກຳນົດຮູ້ປະຖະວີນັ້ນແລ້ວ"

ฯລฯ ຮູ້ຍິ່ງອາໂປ ฯລฯ ເຕໂຊ ฯລฯ ວາໂຍ ฯລฯ ພູຕະ ฯລฯ ເທວະດາ ฯລฯ ປະຊາບໍດີ ฯລฯ ພົມ ฯລฯ ອາພັດສະຣະພົມ ฯລฯ ສຸພະກິນຫະພົມ ฯລฯ ເວຫັບຜະລະພົມ ฯລฯ ອະພິພູສັດ ฯລฯ ອາກາສານັນຈາຍະຕະນະພົມ ฯລฯ ວິນຍານັນຈາຍະຕະນະພົມ ฯລฯ ອາກິນຈັນຍາຍະຕະນະພົມ ฯລฯ ເນວະສັນຍານາສັນຍາຍະຕະນະພົມ ฯລฯ ຮູບທີ່ຕົນເຫັນ ฯລฯ ສຽງທີ່ຕົນໄດ້ຍິນ ฯລฯ ອາລົມທີ່ຕົນຮູ້ ฯລฯ ອາລົມທີ່ຕົນຮູ້ແຈ້ງ ฯລฯ ຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ฯລฯ ຄວາມທີ່ການຈິດຕ່າງກັນ ฯລฯ ສັກກາຍະທັງປວງ ฯລฯ ຮູ້ຍິ່ງນິບພານໂດຍຄວາມເປັນນິບພານ ເມື່ອຮູ້ຍິ່ງນິບພານໂດຍຄວາມເປັນນິບພານແລ້ວບໍ່ກຳນົດໝາຍເຊິ່ງນິບພານ ບໍ່ກຳນົດໝາຍໃນນິບພານ ບໍ່ກຳນົດໝາຍນອກນິບພານ ບໍ່ກຳນົດໝາຍນິບພານວ່າເປັນຂອງເຮົາ ບໍ່ຍິນດີນິບພານ

ຂໍ້ນັ້ນຍ້ອນເຫດໃດ?

ເຮົາກ່າວວ່າ "ຍ້ອນຕະຖາຄົດ ກຳນົດຮູ້ນິບພານນັ້ນແລ້ວ"

**ກຳນົດພູມຕາມໄນທີ ໗ ວ່າດ້ວຍພຣະຕະຖາຄົດ ຈົບ**

## ກຳນົດພູມຕາມໄນທີ ໘ ວ່າດ້ວຍພຣະຕະຖາຄົດ

[໑໙] ພິກຂຸທັງຫຼາຍ ແມ່ນຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ ກໍຮູ້ຍິ່ງປະຖະວີ ໂດຍຄວາມເປັນປະຖະວີ ເມື່ອຮູ້ຍິ່ງປະຖະວີໂດຍຄວາມເປັນປະຖະວີແລ້ວ ບໍ່ກຳນົດໝາຍເຊິ່ງປະຖະວີ ບໍ່ກຳນົດໝາຍໃນປະຖະວີ ບໍ່ກຳນົດໝາຍນອກປະຖະວີ ບໍ່ກຳນົດໝາຍປະຖະວີວ່າ ເປັນຂອງເຮົາ ບໍ່ຍິນດີປະຖະວີ

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນຮູ້ວ່າ "ຄວາມເພີດເພີນເປັນມູນເຫດແຫ່ງທຸກ ຍ້ອນມີພົບ ຊາດຈຶ່ງມີ ສັດ ຜູ້ເກີດແລ້ວຕ້ອງແກ່ ຕ້ອງຕາຍ" ຍ້ອນເຫດນັ້ນ ເຮົາຈຶ່ງກ່າວວ່າ "ຕະຖາຄົດຕັດສະຮູ້ອະນຸດຕະຣະສຳມາສຳໂພທິຍານ ຍ້ອນສິ້ນຕັນຫາ ຄາຍຕັນຫາ ດັບຕັນຫາ ສະຫຼະຕັນຫາ ກຳຈັດຖິ້ມ ຕັນຫາໂດຍປະການທັງປວງ"

ຯລຯ ຮູ້ຍິ່ງອາໂປ ຯລຯ ເຕໂຊ ຯລຯ ວາໂຍ ຯລຯ ພູຕະ ຯລຯ ເທວະດາ ຯລຯ ປະຊາບໍດີ ຯລຯ ພົມ ຯລຯ ອາພັດສະຣະພົມ ຯລຯ ສຸພະກິນຫະພົມ ຯລຯ ເວຫັບຜະລະພົມ ຯລຯ ອະພິພູສັດ ຯລຯ ອາກາສານັນຈາຍະຕະນະພົມ ຯລຯ ວິນຍານັນຈາຍະຕະນະພົມ ຯລຯ ອາກິນຈັນຍາຍະຕະນະພົມ ຯລຯ ເນວະສັນຍານາສັນຍາຍະຕະນະພົມ ຯລຯ ຮູບທີ່ຕົນເຫັນ ຯລຯ ສຽງທີ່ຕົນໄດ້ຍິນ ຯລຯ ອາລົມ ທີ່ຕົນຮູ້ ຯລຯ ອາລົມທີ່ຕົນຮູ້ແຈ້ງ ຯລຯ ຄວາມທີ່ຈິດທີ່ເປັນຊານສະມາບັດເປັນອັນດຽວກັນ ຯລຯ ຄວາມທີ່ການຈິດຕ່າງກັນ ຯລຯ ສັກກາຍະທັງປວງ ຯລຯ ຮູ້ຍິ່ງນິບພານໂດຍຄວາມເປັນນິບພານ ເມື່ອຮູ້ຍິ່ງນິບພານໂດຍຄວາມເປັນນິບພານແລ້ວບໍ່ກຳນົດໝາຍເຊິ່ງນິບພານ ບໍ່ກຳນົດໝາຍໃນນິບພານ ບໍ່ກຳນົດໝາຍນອກນິບພານ ບໍ່ກຳນົດໝາຍນິບພານວ່າເປັນຂອງເຮົາ ບໍ່ຍິນດີນິບພານ

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນຮູ້ວ່າ "ຄວາມເພີດເພີນເປັນມູນເຫດແຫ່ງທຸກ ຍ້ອນມີພົບ ຊາດຈຶ່ງມີ ສັດຜູ້ເກີດແລ້ວຕ້ອງແກ່ ຕ້ອງຕາຍ" ຍ້ອນເຫດນັ້ນ ເຮົາຈຶ່ງກ່າວວ່າ "ຕະຖາຄົດຕັດສະຮູ້

ອະນຸດຕະຣະສຳມາສຳໂພທິຍານ ຍ້ອນສິ້ນຕັນຫາ ຄາຍຕັນຫາ ດັບຕັນຫາ ສະຫຼະຕັນຫາ ກຳຈັດຖິ້ມຕັນຫາ ໂດຍປະການທັງປວງ"

## ກຳນົດພູມຕາມໄນທີ ໘ ວ່າດ້ວຍພຣະຕະຖາຄົດເຈົ້າ ຈົບ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ບໍ່ໄດ້ມີໃຈຍິນດີ ຊື່ນຊົມ[໑] ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

## ມູລະປະຣິຍາຍະສູດທີ ໑ ຈົບ

---

໑ **ບໍ່ໄດ້ມີໃຈຍິນດີຊື່ນຊົມ** ໝາຍເຖິງພິກຂຸເຫຼົ່ານັ້ນບໍ່ຮູ້ຄືບໍ່ເຂົ້າໃຈເນື້ອຄວາມຂອງພຣະສູດນີ້ ເຫດຍັງມີມານະທິດຖິຫຼາຍ ຍ້ອນມົວເມົາໃນປະຣິຍັຕິ ແລະ ຍ້ອນພຣະພາສິດນັ້ນເລີກເຊິ່ງດ້ວຍໄນທີ່ ໑ ຄື ປຸຖຸຊົນ ຈົນເຖິງໄນທີ່ ໘ ຄື ພຣະຕະຖາຄົດເຈົ້າ ທ່ານເຫຼົ່ານັ້ນ ຈຶ່ງບໍ່ຮູ້ແຈ້ງອັດຖະແຫ່ງພຣະພຸດທະພົດ ຈຶ່ງບໍ່ໄດ້ມີໃຈຍິນດີຊື່ນຊົມພຣະພາສິດນັ້ນ ພາຍຫຼັງໄດ້ສະດັບໂຄຕະມະກະສູດ ເຊິ່ງພຣະຜູ້ມີພຣະພາກເຈົ້າຕັດທີ່ໂຄຕະມະກະເຈດີແລ້ວ ຈຶ່ງໄດ້ບັນລຸເປັນພຣະອະຣະຫັນຕ໌ພ້ອມທັງປະຕິສຳພິທາທັງຫລາຍ (ມ.ມູ.ອ. ໑/໑໓/໗໘-໗໕)

# ໘. ສັບພາສະວະສູດ

## ວ່າດ້ວຍອຸບາຍກຳຈັດອາສະວະທັງປວງ

[໑໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດ ວ່າ

"ພິກຂຸທັງຫຼາຍ ເຮົາຈັກສະແດງເຫດແຫ່ງການປິດກັ້ນອາສະວະ[໑] ທັງປວງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

[໑໕] "ພິກຂຸທັງຫຼາຍ ເຮົາກ່າວຄວາມສິ້ນອາສະວະຂອງພິກຂຸຜູ້ຮູ້ ຜູ້ເຫັນ ເຮົາບໍ່ກ່າວຄວາມສິ້ນອາສະວະຂອງພິກຂຸຜູ້ບໍ່ຮູ້ ຜູ້ບໍ່ເຫັນ ເຮົາກ່າວຄວາມສິ້ນອາສະວະຂອງພິກຂຸຜູ້ຮູ້ ຜູ້ເຫັນອັນໃດ (ຄື) ຜູ້ຮູ້ ຜູ້ເຫັນ ໂຍນິໂສມະນະສິການ[໒] ແລະ ອະໂຍນິໂສມະນະສິການ[໓] ເມື່ອພິກຂຸມະນະສິການ ໂດຍບໍ່ແຍບຄາຍ ອາສະວະທັງຫຼາຍ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະ ອາສະວະທັງ ຫຼາຍ ທີ່ເກີດຂຶ້ນແລ້ວຍ່ອມຈະເລີນ ເມື່ອພິກຂຸມະນະສິການໂດຍແຍບຄາຍ ອາສະວະທັງຫຼາຍທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ແລະ ອາສະວະທັງຫຼາຍທີ່ເກີດຂຶ້ນແລ້ວຍ່ອມເສື່ອມໄປ

---

໑ **ອາສະວະ** ໝາຍເຖິງກິເລດທີ່ໝັກໝົມ ຫຼື ດອງຢູ່ໃນສັນດານ ໄຫລຊຶມຊ່ານໄປຍ້ອມຈິດເມື່ອປະສົບອາລົມຕ່າງ ໆ ມີ ໔ ຢ່າງ ຄື (໑) ກາມາສະຫວະ ອາສະວະຄືກາມ (໒) ພະວາສະວະ ອາສະວະຄື ພົບ (໓) ທິດຖາສະຫວະ ອາສະວະຄືທິດຖິ (໔) ອະວິດຊາສະຫວະ ອາສະວະຄືອະວິດຊາ (ຕາມໄນ ອະພິ.ວິ.(ແປ) ໓໕/໙໓໗/໕໗໖-໕໗໗) ແຕ່ພຣະສູດຈັດເປັນ ໓ ຍ້ອນສົງເຄາະທິດຖາສະຫວະເຂົ້າໃນພະວາສະວະ (ມ.ມູ.ອ. ໑/໑໔/໖໗)

໒ **ໂຍນິໂສມະນະສິການ** ໝາຍເຖິງການເຮັດໄວ້ໃນໃຈໂດຍຖືກອຸບາຍ ໂດຍຖືກທາງ ກ່າວຄືການນຶກ ການນ້ອມນຶກ ການຜູກໃຈ ການໃຝ່ໃຈ ການເຮັດໄວ້ໃນໃຈໃນສິ່ງທີ່ບໍ່ທ່ຽງວ່າ ບໍ່ທ່ຽງ ໃນສິ່ງທີ່ເປັນທຸກວ່າ ເປັນທຸກ ໃນສິ່ງທີ່ເປັນອະນັດຕາວ່າເປັນອະນັດຕາ ຫຼື ໂດຍສັດຈານຸໂລມິກຍານ (ມ.ມູ.ອ. ໑/໑໕/໗໑)

໓ **ອະໂຍນິໂສມະນະສິການ** ໝາຍເຖິງການເຮັດໄວ້ໃນໃຈໂດຍບໍ່ຖືກອຸບາຍ ໂດຍບໍ່ຖືກທາງ ກ່າວຄືການເຮັດໄວ້ໃນໃຈໃນສິ່ງທີ່ບໍ່ທ່ຽງວ່າ ທ່ຽງ ໃນສິ່ງທີ່ເປັນທຸກວ່າ ເປັນສຸກ ໃນສິ່ງທີ່ເປັນອະນັດຕາວ່າເປັນອັດຕາ ຫຼື ການນຶກ ການນ້ອມນຶກ ການຜູກໃຈ ການໃຝ່ໃຈ ການເຮັດໄວ້ໃນໃຈເຖິງຄວາມຄິດໂດຍໄນທີ່ກັບກັນກັບສັຈຈະທຳ (ມ.ມູ.ອ. ໑/໑໕/໗໑)

[໑໖] ພິກຂຸທັງຫຼາຍ ອາສະວະທັງຫຼາຍ ທີ່ຕ້ອງລະດ້ວຍທັດສະນະ[໑] ກໍມີ ອາສະວະທັງຫຼາຍ ທີ່ຕ້ອງລະດ້ວຍການສັງວອນ[໒] ກໍມີ ອາສະວະທັງຫຼາຍ ທີ່ຕ້ອງລະດ້ວຍການໃຊ້ສອຍກໍມີ ອາສະວະທັງຫຼາຍ ທີ່ຕ້ອງລະດ້ວຍການອົດກັ້ນກໍມີ ອາສະວະທັງຫຼາຍທີ່ຕ້ອງລະດ້ວຍການເວັ້ນ ກໍມີ ອາສະວະທັງຫຼາຍ ທີ່ຕ້ອງລະດ້ວຍການບັນເທົາກໍມີ ອາສະວະທັງຫຼາຍທີ່ຕ້ອງລະດ້ວຍການຈະເລີນກໍມີ

## ອາສະວະທີ່ຕ້ອງລະດ້ວຍທັດສະນະ

[໑໗] ອາສະວະທີ່ຕ້ອງລະດ້ວຍທັດສະນະ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ ຜູ້ຍັງບໍ່ໄດ້ສະດັບ ບໍ່ໄດ້ພົບພຣະອະຣິຍະທັງຫຼາຍ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບຄຳແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ພົບສັດຕະບຸຣຸດທັງຫຼາຍ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບຄຳແນະນຳໃນທຳຂອງສັດຕະບຸຣຸດ ບໍ່ຮູ້ທົ່ວເຖິງທຳທີ່ຄວນມະນະສິການ ບໍ່ຮູ້ທົ່ວເຖິງທຳທີ່ບໍ່ຄວນມະນະສິການ ເຂົາເມື່ອບໍ່ຮູ້ທົ່ວເຖິງທຳທີ່ຄວນ ມະນະສິການ ເມື່ອບໍ່ຮູ້ທົ່ວເຖິງທຳທີ່ບໍ່ຄວນມະນະສິການ ຍ່ອມມະນະສິການເຖິງທຳທີ່ບໍ່ຄວນມະນະສິການ ບໍ່ມະນະສິການເຖິງທຳທີ່ຄວນມະນະສິການ

ທຳທີ່ບໍ່ຄວນມະນະສິການເຊິ່ງປຸຖຸຊົນມະນະສິການ ເປັນແນວໃດ?

ຄື ເມື່ອປຸຖຸຊົນມະນະສິການເຖິງທຳເຫຼົ່າໃດ ກາມາສະວະ[໓]ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມຈະເລີນ ພະວາສະວະ[໔]ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ທີ່ເກີດແລ້ວຍ່ອມຈະເລີນ ແລະອະວິດຊາສະວະ[໕]ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມຈະເລີນ ເຫຼົ່ານີ້ຄືທຳທີ່ບໍ່ຄວນມະນະສິການເຊິ່ງປຸຖຸຊົນມະນະສິການ

ທຳທີ່ຄວນມະນະສິການ ເຊິ່ງປຸຖຸຊົນບໍ່ມະນະສິການ ເປັນແນວໃດ?

ຄື ເມື່ອປຸຖຸຊົນມະນະສິການເຖິງທຳເຫຼົ່າໃດ ກາມາສະວະທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນທີ່

---

໑ **ທັດສະນະ** ໝາຍເຖິງໂສດາປັດຕິມັກ (ມ.ມູ.ອ. ໑/໒໑/໗໑, ມ.ມູ.ຕີກາ ໑/໑໖/໑໗໐)

໒ **ສັງວອນ** ເປັນຊື່ຂອງສະຕິ ໝາຍເຖິງການລະວັງການປິດການກັ້ນ (ມ.ມູ. ຕີກາ ໑/໑໖/໑໗໑) ແລະເບິ່ງ ອັງ. ສັກກະ(ແປ) ໒໒/໕໗/໕໘

໓ **ກາມາສະຫວະ** ໝາຍເຖິງຄວາມກຳໜັດໃນການມະຄຸນ ໕ (ມ.ມູ.ອ. ໑/໑໗/໗໔)

໔ **ພະວາສະວະ** ໝາຍເຖິງຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນຮູບ ພົບແລະອະຮູປະພົບ ຄວາມຕິດໃຈໃນຊານທີ່ສະຫະຣະຄະຕະດ້ວຍສັດສະຕະທິດຖິ ແລະ ອຸດເສດທິດຖິ ລວມທັງທິດຖາສະຫວະ (ມ.ມູ.ອ. ໑/໑໗/໗໔)

໕ **ອະວິດຊາສະຫວະ** ໝາຍເຖິງຄວາມບໍ່ຮູ້ໃນອະຣິຍະສັດ ໔ (ມ.ມູ.ອ. ໑/໑໗/໗໔)

ເກີດຂຶ້ນແລ້ວຍ່ອມເສື່ອມໄປ ພະວາສະວະທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມເສື່ອມໄປແລະອະວິດຊາສະວະທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມເສື່ອມໄປ ເຫຼົ່ານີ້ຄືທຳທີ່ຄວນມະນະສິການເຊິ່ງປຸຖຸຊົນບໍ່ມະນະສິການ

ຍ້ອນປຸຖຸຊົນນັ້ນມະນະສິການເຖິງທຳທີ່ບໍ່ຄວນມະນະສິການ ບໍ່ມະນະສິການເຖິງທຳທີ່ຄວນມະນະສິການ ອາສະວະທັງຫຼາຍທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະ ອາສະວະທັງຫຼາຍທີ່ເກີດຂຶ້ນແລ້ວຍ່ອມຈະເລີນ

[໑໗] ປຸຖຸຊົນນັ້ນ ມະນະສິການໂດຍບໍ່ແຍບຄາຍແນວນີ້ວ່າ "ໃນອະດີດຕະການຍາວນານເຮົາໄດ້ມີແລ້ວ ຫຼື ບໍ່ໄດ້ມີແລ້ວນໍ? ເຮົາໄດ້ເປັນອັນໃດມານໍ? ເຮົາໄດ້ເປັນແນວໃດມານໍ? ເຮົາໄດ້ເປັນອັນໃດແລ້ວຈຶ່ງມາເປັນອັນໃດອີກນໍ? ໃນອະນາຄົດຕະການຍາວນານ ເຮົາຈັກມີຫຼືຈັກບໍ່ມີນໍ? ເຮົາຈັກເປັນອັນໃດນໍ? ເຮົາຈັກເປັນແນວໃດນໍ? ເຮົາຈັກເປັນອັນໃດແລ້ວໄປເປັນອັນໃດອີກນໍ?" ຫຼືວ່າ ບັດນີ້ ມີຄວາມສົງໄສພາຍໃນຕົນ ຜາຣົບປັດຈຸບັນການກ່າວວ່າ "ເຮົາມີຢູ່ຫຼືບໍ່ນໍ? ເຮົາເປັນອັນໃດນໍ? ເຮົາເປັນແນວໃດນໍ? ສັດນີ້ມາຈາກໃສນໍ? ແລະເຂົາຈັກໄປໃສກັນນໍ?"

[໑໘] ເມື່ອປຸຖຸຊົນນັ້ນ ມະນະສິການໂດຍບໍ່ແຍບຄາຍແນວນີ້ ທິດຖິ (ຄວາມເຫັນຜິດ) ແນວໃດແນວໜຶ່ງ ໃນບັນດາທິດຖິ ໖ ກໍເກີດຂຶ້ນ ຄື

໑. ທິດຖິເກີດຂຶ້ນແກ່ຜູ້ນັ້ນໂດຍແນ່ແທ້ໝັ້ນຄົງວ່າ "ອັດຕາຂອງເຮົາມີຢູ່"
໒. ທິດຖິເກີດຂຶ້ນແກ່ຜູ້ນັ້ນໂດຍແນ່ແທ້ໝັ້ນຄົງວ່າ "ອັດຕາຂອງເຮົາບໍ່ມີ"
໓. ທິດຖິເກີດຂຶ້ນແກ່ຜູ້ນັ້ນໂດຍແນ່ແທ້ໝັ້ນຄົງວ່າ "ເຮົາຮູ້ຈັກອັດຕາໄດ້ດ້ວຍອັດຕາ"
໔. ທິດຖິເກີດຂຶ້ນແກ່ຜູ້ນັ້ນໂດຍແນ່ແທ້ໝັ້ນຄົງວ່າ "ເຮົາຮູ້ຈັກສິ່ງທີ່ບໍ່ແມ່ນອັດຕາໄດ້ດ້ວຍອັດຕາ"
໕. ທິດຖິເກີດຂຶ້ນແກ່ຜູ້ນັ້ນໂດຍແນ່ແທ້ໝັ້ນຄົງວ່າ "ເຮົາຮູ້ຈັກອັດຕາໄດ້ດ້ວຍສິ່ງທີ່ບໍ່ແມ່ນອັດຕາ"
໖. ອີກຢ່າງໜຶ່ງ ທິດຖິເກີດມີແກ່ຜູ້ນັ້ນ ແນວນີ້ວ່າ "ອັດຕາຂອງເຮົານີ້ເອງ ເປັນຜູ້ກ່າວ ເປັນຜູ້ຮູ້ ສະເຫວີຍຜົນແຫ່ງກຳດີ ແລະ ກຳຊົ່ວໃນອາລົມນັ້ນ ໆ ອັດຕາຂອງເຮົານີ້ນັ້ນເປັນສະພາວະທີ່ທ່ຽງ ໝັ້ນຍືນ ໝັ້ນຄົງ ບໍ່ແປຜັນໄປເປັນທຳມະດາ ຈັກດຳລົງຢູ່ສະເໝີດ້ວຍສິ່ງທີ່ແນ່ນອນ"

ຂໍ້ນີ້ ເຮົາຮຽກວ່າ ທິດຖິ ໄດ້ແກ່ ປ່າຕຶບຄືທິດຖິ ທາງກັນດານຄືທິດຖິ ສ້ຽນໜາມຄືທິດຖິ ຄວາມເດືອດຮ້ອນຄືທິດຖິ ກິເລດເຄື່ອງຜູກພັນສັດຄືທິດຖິ

ພິກຂຸທັງຫຼາຍ ເຮົາກ່າວວ່າ "ປຸຖຸຊົນຜູ້ປະກອບດ້ວຍທິດຖິສັງໂຍດ ຜູ້ຍັງບໍ່ໄດ້ສະດັບ ຍ່ອມບໍ່ພົ້ນຈາກຊາດ (ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະ ອຸປາຍາດ (ຄວາມຄັບແຄ້ນໃຈ) ຍ່ອມບໍ່ພົ້ນຈາກທຸກ"

[໔໐] ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບແລ້ວ ໄດ້ພົບພຣະອະຣິຍະທັງຫຼາຍສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບຄຳແນະນຳດີແລ້ວໃນທຳຂອງພຣະອະຣິຍະ ພົບສັດຕະບຸຣຸດທັງຫຼາຍ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບຄຳແນະນຳດີແລ້ວໃນທຳຂອງສັດຕະບຸຣຸດ ຍ່ອມຮູ້ທົ່ວເຖິງທຳທີ່ຄວນມະນະສິການ ຮູ້ທົ່ວເຖິງທຳທີ່ບໍ່ຄວນມະນະສິການ ອະຣິຍະສາວົກນັ້ນ ເມື່ອຮູ້ທົ່ວເຖິງທຳທີ່ຄວນມະນະສິການ ເມື່ອຮູ້ທົ່ວເຖິງທຳທີ່ບໍ່ຄວນມະນະສິການ ຍ່ອມບໍ່ມະນະສິການເຖິງທຳທີ່ບໍ່ຄວນ ມະນະສິການ ມະນະສິການເຖິງແຕ່ທຳທີ່ຄວນມະນະສິການ

ທຳທີ່ບໍ່ຄວນມະນະສິການ ເຊິ່ງອະຣິຍະສາວົກບໍ່ມະນະສິການ ເປັນແນວໃດ?

ຄື ເມື່ອອະຣິຍະສາວົກນັ້ນ ມະນະສິການເຖິງທຳເຫຼົ່າໃດ ກາມາສະວະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມຈະເລີນ ພະວາສະວະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມຈະເລີນ ແລະ ອະວິດຊາສະວະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມຈະເລີນ ເຫຼົ່ານີ້ ຄື ທຳທີ່ບໍ່ຄວນມະນະສິການ ເຊິ່ງອະຣິຍະສາວົກບໍ່ມະນະສິການ

ທຳທີ່ຄວນມະນະສິການ ເຊິ່ງອະຣິຍະສາວົກມະນະສິການ ເປັນແນວໃດ?

ຄື ເມື່ອອະຣິຍະສາວົກນັ້ນ ມະນະສິການເຖິງທຳເຫຼົ່າໃດ ກາມາສະວະທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມເສື່ອມໄປ ພະວາສະວະທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມເສື່ອມໄປ ແລະ ອະວິດຊາສະວະທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ທີ່ເກີດຂຶ້ນແລ້ວຍ່ອມເສື່ອມໄປ ເຫຼົ່ານີ້ຄືທຳທີ່ຄວນມະນະສິການເຊິ່ງອະຣິຍະສາວົກມະນະສິການ ຍ້ອນອະຣິຍະສາວົກນັ້ນ ບໍ່ມະນະສິການເຖິງທຳທີ່ບໍ່ຄວນມະນະສິການ ມະນະສິການເຖິງທຳທີ່ຄວນມະນະສິການ ອາສະວະທັງຫຼາຍທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ແລະ ອາສະວະທັງຫຼາຍທີ່ເກີດຂຶ້ນແລ້ວຍ່ອມເສື່ອມໄປ

[໔໑] ອະຣິຍະສາວົກນັ້ນ ມະນະສິການໂດຍແຍບຄາຍວ່າ "ນີ້ທຸກ (ສະພາວະທີ່ທົນໄດ້ຍາກ) ນີ້ ທຸກຂະສະມຸໄທ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)" ເມື່ອອະຣິຍະສາວົກນັ້ນ ມະນະສິການໂດຍແຍບຄາຍແນວນີ້

ສັງໂຍດ ໓ ຄື (໑) ສັກກາຍະທິດຖິ(ຄວາມເຫັນວ່າເປັນຕົວຂອງຕົນ) (໒) ວິຈິກິດສາ

(ຄວາມລັງເລສົງໄສ) (໓) ສີລັບພະຕະປະຣາມາດ (ຄວາມຖືໝັ້ນສີນແລະຂໍ້ວັດປະຕິບັດ) ຍ່ອມສິ້ນໄປ

ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າ ອາສະວະທີ່ຕ້ອງລະດ້ວຍທັດສະນະ

## ອາສະວະທີ່ຕ້ອງລະດ້ວຍການສັງວອນ

[໔໔] ອາສະວະທີ່ຕ້ອງລະດ້ວຍການສັງວອນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍ ເປັນຜູ້ສັງລວມດ້ວຍການສັງວອນໃນຈັກຂຸນຊີຢູ່ ເຊິ່ງເມື່ອພິກຂຸບໍ່ສັງລວມຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ກໍຈະເພິ່ງເກີດຂຶ້ນ ເມື່ອພິກຂຸສັງລວມຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ຍ່ອມບໍ່ມີແກ່ພິກຂຸດ້ວຍອາການແນວນີ້ ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ເປັນຜູ້ສັງລວມດ້ວຍການສັງວອນໃນໂສຕິນຊີຢູ່ ຯລຯ ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ເປັນຜູ້ສັງລວມດ້ວຍການສັງວອນໃນຄານິນຊີຢູ່ ຯລຯ ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ເປັນຜູ້ສັງລວມດ້ວຍການສັງວອນໃນຊິວຫິນຊີຢູ່ ຯລຯພິກຂຸພິຈາລະນາໂດຍແຍບຄາຍແລ້ວ ເປັນຜູ້ສັງລວມດ້ວຍການສັງວອນໃນກາຍິນຊີຢູ່ ຯລຯ ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ເປັນຜູ້ສັງລວມ ດ້ວຍການສັງວອນໃນມະນິນຊີຢູ່ ເຊິ່ງເມື່ອພິກຂຸບໍ່ສັງລວມຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນກໍຈະເພິ່ງເກີດຂຶ້ນ ເມື່ອພິກຂຸສັງລວມຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ ຄວາມຄັບແຄ້ນ ຍ່ອມບໍ່ມີແກ່ພິກຂຸດ້ວຍອາການແນວນີ້

ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າ ອາສະວະທີ່ຕ້ອງລະດ້ວຍການສັງວອນ

## ອາສະວະທີ່ຕ້ອງລະດ້ວຍການໃຊ້ສອຍ

[໔໓] ອາສະວະທີ່ຕ້ອງລະດ້ວຍການໃຊ້ສອຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍແລ້ວ ໃຊ້ສອຍຈີວອນ ພຽງເພື່ອປ້ອງກັນ ຄວາມໜາວ ຄວາມຮ້ອນ ເຮືອດ ຍຸງ ລົມ ແດດ ແລະ ສຳຜັດແຫ່ງສັດເລືອຄານ ພຽງເພື່ອປົກປິດອະໄວຍະວະທີ່ກໍ່ໃຫ້ເກີດຄວາມລະອາຍ

ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ສັນບິນທະບາດ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອຄວາມມົວເມົາ ບໍ່ແມ່ນເພື່ອປະດັບ[໑] ບໍ່ແມ່ນເພື່ອຕົກແຕ່ງ[໑] ແຕ່ພຽງເພື່ອໃຫ້ກາຍນີ້ດຳລົງຢູ່ໄດ້

---

໑ **ເພື່ອປະດັບ** ໃນທີ່ນີ້ໝາຍເຖິງເພື່ອໃຫ້ຮ່າງກາຍຕຸ້ຍພີ ອວບອິ່ມເໝືອນຍິງແພດສະຍາ (ມ.ມູ.ຕີກາ ໑/໔໓/໔໑໑, ອັງ. ສັກກະ.ຕີກາ ໓/໕໗/໑໕໕, ວິສຸທທິ. ໑/໑໗/໓໓)

ເພື່ອໃຫ້ ຊີວິຕິນຊີເປັນໄປ ເພື່ອບຳບັດຄວາມຫິວ ເພື່ອອະນຸເຄາະພົມມະຈັນ ດ້ວຍຄິດເຫັນວ່າ "ໂດຍອຸບາຍນີ້ ເຮົາຈັກກຳຈັດເວທະນາເກົ່າໄດ້ ແລະ ຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳລົງຢູ່ແຫ່ງຊີວິດ ຄວາມບໍ່ມີໂທດ ແລະ ການຢູ່ໂດຍຜາສຸກຈັກມີແກ່ເຮົາ" ແລ້ວຈຶ່ງບໍຣິໂພກອາຫານ

ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ໃຊ້ສອຍເສນາສະນະ ພຽງເພື່ອປ້ອງກັນຄວາມໜາວ ຄວາມຮ້ອນ ເຮືອດ ຍຸງ ລົມ ແດດ ແລະ ສຳຜັດແຫ່ງສັດເລືອຄານ ພຽງເພື່ອບັນເທົາອັນຕະລາຍທີ່ເກີດຈາກລະດູ ແລະ ເພື່ອຄວາມຍິນດີໃນການຫຼີກລີ້

ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ໃຊ້ສອຍຄິລານະປັດໄຈເພສັດບໍຣິຂານ[໒] ພຽງເພື່ອບັນເທົາ ເວທະນາທີ່ເກີດຈາກອາພາດຕ່າງ ໆ ທີ່ເກີດຂຶ້ນແລ້ວ ແລະເພື່ອບໍ່ມີຄວາມບຽດບຽນເປັນທີ່ສຸດ ເຊິ່ງເມື່ອພິກຂຸບໍ່ໃຊ້ສອຍຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ກໍຈະເພິ່ງເກີດຂຶ້ນເມື່ອພິກຂຸໃຊ້ສອຍຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ຍ່ອມບໍ່ມີແກ່ພິກຂຸດ້ວຍ ອາການແນວນີ້

ພິກຂຸ ທັງຫຼາຍ ເຫຼົ່ານີ້ຮຽກວ່າ ອາສະວະທີ່ຕ້ອງລະດ້ວຍການໃຊ້ສອຍ

## ອາສະວະທີ່ຕ້ອງລະດ້ວຍການອົດກັ້ນ

[໔໔] ອາສະວະທີ່ຕ້ອງລະດ້ວຍການອົດກັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍແລ້ວ ເປັນຜູ້ອົດທົນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ເຮືອດ ຍຸງ ລົມ ແດດ ແລະ ສຳຜັດແຫ່ງສັດເລືອຄານ ເປັນຜູ້ອົດກັ້ນຕໍ່ຖ້ອຍຄຳຫຍາບ ຄຳສົບສໍ່ ເປັນຜູ້ອົດກັ້ນຕໍ່ເວທະນາທັງຫຼາຍ ອັນມີໃນຮ່າງກາຍ ເປັນທຸກ ກ້າແຂງ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດໄດ້ ເຊິ່ງເມື່ອພິກຂຸບໍ່ອົດກັ້ນຢູ່

---

໔ **ເພື່ອຕົກແຕ່ງ** ໃນທີ່ນີ້ໝາຍເຖິງເພື່ອບຳລຸງຜິວໃຫ້ງົດງາມ ເໝືອນຍິງນັກຟ້ອນ ມຸ້ງເຖິງຄວາມມີຜິວພັນງາມ (ມ.ມູ. ຕີກາ ໑/໔໓/໔໑໑, ອັງ.ສັກກະ.ຕີກາ ໓/໕໗/໑໕໕, ວິສຸທທິ. ໑/໑໗/໓໓)

໓ **ຄິລານະປັດໄຈເພສັດບໍຣິຂານ** ຄືເພສັດ ໕ ຊະນິດ ໄດ້ແກ່ ເນີຍໃສ ເນີຍຂົ້ນ ນ້ຳມັນ ນ້ຳເຜີ້ງ ນ້ຳອ້ອຍ (ວິ.ອ. ໔/໔໙໐/໔໐, ສາຣັຕຖະ.ຕີກາ ໔/໔໙໐/໓໙໓)

ເປັນສິ່ງສັບປາຍະສຳລັບພິກຂຸຜູ້ເຈັບໄຂ້ ຈັດວ່າເປັນບໍຣິຂານ ຄື ບໍລິວານຂອງຊີວິດ ເໝືອນກຳແພງລ້ອມພຣະນະຄອນ ຍ້ອນຖ້າປ້ອງກັນຖືຮັກສາບໍ່ໃຫ້ອາພາດທີ່ຈະບັ່ນທອນຊີວິດໄດ້ຊ່ອງທາງເກີດຂຶ້ນ ແລະ ເປັນສຳພາລະຂອງຊີວິດ ຖ້າປະຄັບປະຄອງຊີວິດໃຫ້ດຳລົງຢູ່ດົນ (ວິ.ອ. ໔/໔໙໐/໔໐-໔໑, ມ.ມູ.ອ. ໑/໑໙໑/໓໙໗, ມ.ມູ.ຕີກາ ໑/໔໓/໔໑໓)

ເປັນເຄື່ອງປ້ອງກັນໂຣກ ບຳບັດໂຣກທີ່ໃຫ້ເກີດທຸກຂະເວທະນາ ເນື່ອງຈາກທາດກຳເຣີບໃຫ້ຫາຍໄປ (ສາຣັຕຖະ.ຕີກາ ໔/໔໙໐/໓໙໓)

ອາສະວະ ແລະ ຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນກໍຈະເພີ່ງເກີດຂຶ້ນ ເມື່ອທ່ານອົດກັ້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ຍ່ອມບໍ່ມີແກ່ທ່ານດ້ວຍອາການຢ່າງນີ້

ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າ ອາສະວະທີ່ຕ້ອງລະດ້ວຍການອົດກັ້ນ

## ອາສະວະທີ່ຕ້ອງລະດ້ວຍການເວັ້ນ

[໒໕] ອາສະວະທີ່ຕ້ອງລະດ້ວຍການເວັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍແລ້ວເວັ້ນຊ້າງດຸຮ້າຍ ເວັ້ນມ້າດຸຮ້າຍ ເວັ້ນງົວດຸຮ້າຍ ເວັ້ນໝາດຸຮ້າຍ ເວັ້ນງູ ຫຼັກ ຕໍ ສະຖານທີ່ມີໜາມ ຂຸມ ເຫວ ນໍ້າເປື້ອນ ນໍ້າສ້າງ ສິກກະປົກ ແລະ ພິຈາລະນາໂດຍແຍບຄາຍແລ້ວເວັ້ນສະຖານທີ່ທີ່ບໍ່ຄວນນັ່ງ ສະຖານທີ່ບໍ່ຄວນທ່ຽວໄປ ແລະ ມິດຊົ່ວທີ່ເພື່ອນພົມມະຈາຣີທັງຫຼາຍລົງຄວາມເຫັນວ່າເປັນຖານະທີ່ເປັນບາບ ເຊິ່ງເມື່ອພິກຂຸບໍ່ເວັ້ນ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ກໍຈະເພີ່ງເກີດຂຶ້ນເມື່ອພິກຂຸເວັ້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ຍ່ອມບໍ່ມີແກ່ພິກຂຸດ້ວຍອາການແນວນີ້

ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າ ອາສະວະທີ່ຕ້ອງລະດ້ວຍການເວັ້ນ

## ອາສະວະທີ່ຕ້ອງລະດ້ວຍການບັນເທົາ

[໒໖] ອາສະວະທີ່ຕ້ອງລະດ້ວຍການບັນເທົາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍແລ້ວ ບໍ່ຮັບກາມວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ແລະ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ພິຈາລະນາໂດຍແຍບຄາຍແລ້ວ ບໍ່ຮັບພະຍາບາດວິຕົກທີ່ເກີດຂຶ້ນ ຯລຯ ບໍ່ຮັບວິຫິງສາວິຕົກທີ່ເກີດຂຶ້ນ ຯລຯ ບໍ່ຮັບບາບອະກຸສົນທຳ[໑]ທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ແລະເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ເຊິ່ງເມື່ອພິກຂຸບໍ່ບັນເທົາຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ກໍຈະເພີ່ງເກີດຂຶ້ນ ເມື່ອພິກຂຸບັນເທົາຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ຍ່ອມບໍ່ມີແກ່ພິກຂຸດ້ວຍອາການແນວນີ້

ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າ ອາສະວະທີ່ຕ້ອງລະດ້ວຍການບັນເທົາ

---

໑ **ບາບອະກຸສົນທຳ** ໝາຍເຖິງສະພາວະທຳທີ່ເປັນອະກຸສົນ ມີ ໖ ປະການ ຄື (໑) ຍາດວິຕົກ ຄວາມນຶກເຖິງ ຍາດ (໒) ຊົນນະບົດວິຕົກ ຄວາມນຶກເຖິງເຮືອນຕົວເອງ (໓) ອະມະຣະວິຕົກ ຄວາມນຶກທີ່ມີທິດຖິຊັດສ່າຍບໍ່ແນ່ນອນ (໔) ປະຣະນຸດທາຍະຕາປະຕິສັງຍຸດວິຕົກ ຄວາມນຶກເລື້ອງອະນຸເຄາະຜູ້ອື່ນ (໕) ລາບສັກກາຣະສິໂລກະປະຕິສັງຍຸດວິຕົກ ຄວາມນຶກເຖິງລາບສັກກາຣະແລະສັນເສີນ (໖) ອະນະວິນຍັດຕິປະຕິສັງຍຸດວິຕົກ ຄວາມນຶກເລື້ອງເກງຜູ້ອື່ນຈະດູໝິ່ນ (ມ.ມູ.ອ. ໑/໒໖/໗໐)

## ອາສະວະທີ່ຕ້ອງລະດ້ວຍການຈະເລີນ

[໔໗] ອາສະວະທີ່ຕ້ອງລະດ້ວຍການຈະເລີນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍແລ້ວ ຈະເລີນສະຕິສຳໂພດຊົງ[໑] ທີ່ອາໄສວິເວກ[໒] (ຄວາມສະຫງັດ) ອາໄສວິຣາຄະ (ຄວາມຄາຍກຳໜັດ) ອາໄສນິໂຣທະ (ຄວາມດັບ) ນ້ອມໄປໃນການສະຫຼະ ພິຈາລະນາໂດຍແຍບຄາຍແລ້ວ ຈະເລີນທຳມະວິຈະຍະສຳໂພດຊົງ ฯລฯ ຈະເລີນວິຣິຍະສຳໂພດຊົງ ฯລฯ ຈະເລີນປີຕິສຳໂພດຊົງ ฯລฯ ຈະເລີນປັດສັດທິສຳໂພດຊົງ ฯລฯ ຈະເລີນສະມາທິສຳໂພດຊົງ ฯລฯ ຈະເລີນອຸເປກຂາສຳໂພດຊົງທີ່ອາໄສວິເວກ ອາໄສ ວິຣາຄະ ອາໄສນິໂຣທະ ນ້ອມໄປໃນການສະຫຼະ ເຊິ່ງເມື່ອບໍ່ຈະເລີນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ກໍຈະເພີ່ງເກີດຂຶ້ນ ເມື່ອພິກຂຸຈະເລີນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ຍ່ອມບໍ່ມີແກ່ພິກຂຸດ້ວຍອາການແນວນີ້

ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າ ອາສະວະທີ່ຕ້ອງລະດ້ວຍການຈະເລີນ

[໔໘] ພິກຂຸທັງຫຼາຍ ອາສະວະເຫຼົ່າໃດທີ່ພິກຂຸໃດຕ້ອງລະດ້ວຍທັດສະນະ ອາສະວະເຫຼົ່ານັ້ນ ເປັນອາສະວະທີ່ພິກຂຸນັ້ນລະໄດ້ແລ້ວດ້ວຍທັດສະນະ ອາສະວະເຫຼົ່າໃດທີ່ພິກຂຸໃດຕ້ອງລະດ້ວຍການສັງວອນ ອາສະວະເຫຼົ່ານັ້ນເປັນອາສະວະທີ່ພິກຂຸນັ້ນລະໄດ້ແລ້ວດ້ວຍການສັງວອນ ອາສະວະເຫຼົ່າໃດທີ່ພິກຂຸໃດຕ້ອງລະດ້ວຍການໃຊ້ສອຍ ອາສະວະເຫຼົ່ານັ້ນເປັນອາສະວະທີ່ພິກຂຸນັ້ນລະໄດ້ແລ້ວ ດ້ວຍການໃຊ້ສອຍ ອາສະວະເຫຼົ່າໃດທີ່ພິກຂຸໃດຕ້ອງລະດ້ວຍການອົດກັ້ນ ອາສະວະເຫຼົ່ານັ້ນເປັນອາສະວະທີ່ພິກຂຸນັ້ນລະໄດ້ແລ້ວດ້ວຍການອົດກັ້ນ ອາສະວະເຫຼົ່າໃດທີ່ພິກຂຸໃດຕ້ອງລະດ້ວຍການເວັ້ນ ອາສະວະເຫຼົ່ານັ້ນເປັນອາສະວະທີ່ພິກຂຸນັ້ນລະໄດ້ແລ້ວດ້ວຍການເວັ້ນ ອາສະວະເຫຼົ່າໃດທີ່ພິກຂຸໃດຕ້ອງລະດ້ວຍການບັນເທົາ ອາສະວະເຫຼົ່ານັ້ນເປັນອາສະວະທີ່ພິກຂຸນັ້ນລະໄດ້ແລ້ວດ້ວຍການບັນເທົາ ອາສະວະເຫຼົ່າໃດທີ່ພິກຂຸໃດຕ້ອງລະດ້ວຍການຈະເລີນ ອາສະວະເຫຼົ່ານັ້ນເປັນອາສະວະທີ່ພິກຂຸນັ້ນລະໄດ້ແລ້ວດ້ວຍການຈະເລີນ

---

໑ **ສຳໂພດຊົງ** ໝາຍເຖິງທຳທີ່ເປັນອົງແຫ່ງການຕັດສະຣູ້ ມີ ໗ ປະການ ຄື (໑) ສະຕິ ຄວາມຣະນຶກໄດ້ (໒) ທຳມະວິດຍະ ຄວາມເລືອກເຟັ້ນທຳ (໓) ວິຣິຍະ ຄວາມພຽນ (໔) ປີຕິ ຄວາມອິ່ມໃຈ (໕) ປັດສັດທິ ຄວາມສະງົບ ກາຍສະງົບໃຈ (໖) ສະມາທິ ຄວາມມີໃຈຕັ້ງໝັ້ນ (໗) ອຸເປກຂາ ຄວາມມີໃຈເປັນກາງຍ້ອນເຫັນຕາມເປັນຈິງ ແຕ່ລະຂໍ້ມີສຳໂພດຊົງຕໍ່ທ້າຍ ເຊັ່ນ ສະຕິສຳໂພດຊົງ (ທີ.ປາ. ໑໑/໓໓໐/໒໒໑,໓໕໗/໒໕໘, ອະພິ.ວິ.(ແປ) ໓໕/໔໖໘/໓໕໙, ມ.ມູ,ອ. ໑/໔໗/໙໑-໙໒)

໒ **ວິເວກ** ໃນທີ່ນີ້ໝາຍເຖິງວິເວກ ໕ ປະການ ຄື (໑) ວິກຂຳພະນະວິເວກ (ຄວາມສະຫງັດດ້ວຍການຂົ່ມໄວ້) (໒) ຕະທັງຄະວິເວກ (ຄວາມສະຫງັດດ້ວຍອົງນັ້ນ ໆ) (໓) ສະມຸດເສດວິເວກ (ຄວາມສະຫງັດດ້ວຍການຕັດຂາດ) (໔) ປັດສັດທິວິເວກ(ຄວາມສະຫງັດດ້ວຍການສະງົບລະງັບ) (໕) ນິດສະຣະນະວິເວກ (ຄວາມສະຫງັດດ້ວຍການກຳຈັດອອກໄດ້) (ມ.ມູ.ອ. ໑/໔໗/໙໑)

ພິກຂຸທັງຫຼາຍ ພິກຂຸນີ້ເຮົາຮຽກວ່າ ເປັນຜູ້ສັງລວມດ້ວຍການສັງວອນອາສະວະທັງປວງຢູ່ ຕັດຕັນຫາໄດ້ແລ້ວ ຄາຍສັງໂຍດໄດ້ແລ້ວ ເຮັດທີ່ສຸດທຸກໄດ້ແລ້ວ ຍ້ອນລະມານະໄດ້ໂດຍຊອບ[໑]"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊື່ນຊົມພຣະພາ ສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສັບພາສະວະສູດທີ ໘ ຈົບ**

## ໙. ທຳມະທາຍາດສູດ

### ວ່າດ້ວຍທາຍາດແຫ່ງທຳ

[໒໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນ ທິກະເສດຖີ ເຂດນະຄອນສາວັດຖີ ບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸ ທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງເປັນທຳທາຍາດຂອງເຮົາ ຢ່າເປັນອາມິດທາຍາດເລີຍ ເຮົາມີຄວາມອີດູໃນພວກທ່ານຢູ່ວ່າ "ເຮັດແນວໃດນໍ ສາວົກທັງຫຼາຍຂອງເຮົາຈະເພິ່ງເປັນທຳ ທາຍາດ ບໍ່ເປັນອາມິດທາຍາດ" ຫາກທ່ານທັງຫຼາຍເປັນອາມິດທາຍາດຂອງເຮົາ ບໍ່ເປັນທຳ ທາຍາດ ຍ້ອນຂໍ້ນັ້ນ ທ່ານທັງຫຼາຍຈະເພິ່ງຖືກວິນຍູຊົນທັງຫຼາຍຕິຕຽນວ່າ "ສາວົກຂອງພຣະສາດ ສະດາເປັນອາມິດທາຍາດຢູ່ ບໍ່ເປັນທຳທາຍາດ" ແມ່ນເຮົາກໍຈະເພິ່ງຖືກວິນຍູຊົນທັງຫຼາຍຕິຕຽນ ວ່າ "ສາວົກຂອງພຣະສາດສະດາເປັນອາມິດທາຍາດຢູ່ ບໍ່ເປັນທຳທາຍາດ" ຫາກທ່ານທັງຫຼາຍ ຈະເພິ່ງເປັນທຳທາຍາດຂອງເຮົາ ບໍ່ເປັນອາມິດທາຍາດ ຍ້ອນຂໍ້ນັ້ນ ທ່ານທັງຫຼາຍຈຶ່ງຈະບໍ່ຖືກວິນ ຍູຊົນທັງຫຼາຍຕິຕຽນວ່າ "ສາວົກຂອງພຣະສາດສະດາເປັນທຳທາຍາດຢູ່ ບໍ່ເປັນອາມິດທາຍາດ" ແມ່ນເຮົາກໍຈຶ່ງຈະບໍ່ຖືກວິນຍູຊົນທັງຫຼາຍຕິຕຽນວ່າ "ສາວົກຂອງພຣະສາດສະດາເປັນອາມິດ ທາຍາດຢູ່ ບໍ່ເປັນທຳທາຍາດ"

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍຈົ່ງເປັນທຳທາຍາດຂອງເຮົາຢູ່ເທີ້ນ ຢ່າເປັນ

[໑] ເບິ່ງ ອັງ.ປັນຈະກະ. (ແປ) ໒໒/໑໐໐/໑໘໒

ອາມິດທາຍາດເລີຍ ຍ້ອນເຮົາມີຄວາມອີດູໃນທ່ານທັງຫຼາຍຢູ່ວ່າ "ເຮັດແນວໃດນໍ ສາວົກທັງຫຼາຍຂອງເຮົາຈະເພິ່ງເປັນທຳທາຍາດ ບໍ່ເປັນອາມິດທາຍາດ"

[໓໐] ພິກຂຸທັງຫຼາຍ ຫາກເຮົາຈະເພິ່ງເປັນຜູ້ສັນສຳເລັດຫ້າມພັດຮຽບຮ້ອຍແລ້ວ ສິ້ນສຸດພັດຕະກິດ ມີຄວາມສຸກຕາມຄວາມຕ້ອງການແລ້ວ ແຕ່ບິນທະບາດຂອງເຮົາຍັງມີເຫຼືອຈະຕ້ອງຖິ້ມ ໃນເວລານັ້ນ ພິກຂຸ ໘ ອົງ ຖືກຄວາມຫິວ ແລະ ຄວາມອ່ອນເພຍຄອບງຳພາກັນມາ ເຮົາຄວນກ່າວກັບພິກຂຸທັງ ໘ ອົງນັ້ນແນວນີ້ວ່າ "ພິກຂຸທັງຫຼາຍ ເຮົາເປັນຜູ້ສັນສຳເລັດຫ້າມພັດຮຽບຮ້ອຍແລ້ວ ສິ້ນສຸດພັດຕະກິດ ມີຄວາມສຸກຕາມຄວາມຕ້ອງການແລ້ວ ແຕ່ບິນທະບາດນີ້ຂອງເຮົາຍັງມີເຫຼືອຈະຕ້ອງຖິ້ມ ຫາກທ່ານທັງຫຼາຍປະສົງ ກໍຈົ່ງສັນເທີ້ນ ຫາກທ່ານທັງຫຼາຍຈະບໍ່ສັນ ບັດນີ້ເຮົາຈະຖິ້ມລົງເທິງພື້ນທີ່ປາສະຈາກຂອງສົດຂຽວ ຫຼື ຖອກລົງໃນນ້ຳທີ່ປາສະຈາກໂຕສັດ" ພິກຂຸ ໘ ອົງນັ້ນ ອົງໜຶ່ງ ມີຄວາມຄິດແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ໄດ້ສະເຫວີຍສຳເລັດຫ້າມພັດຮຽບຮ້ອຍແລ້ວ ສິ້ນສຸດພັດຕະກິດ ມີຄວາມສຸກຕາມຄວາມຕ້ອງການແລ້ວ ແຕ່ບິນທະບາດຂອງພຣະຜູ້ມີພຣະພາກເຈົ້ານີ້ ຍັງມີເຫຼືອຈະຕ້ອງຖິ້ມ ຫາກເຮົາຈະບໍ່ສັນ ບັດນີ້ ພຣະຜູ້ມີພຣະພາກເຈົ້າກໍຈະຊົງຖິ້ມລົງເທິງພື້ນທີ່ປາສະຈາກຂອງສົດຂຽວ ຫຼື ຊົງຖອກລົງໃນນ້ຳທີ່ປາສະຈາກໂຕສັດ ແຕ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເປັນທຳທາຍາດຂອງເຮົາ ຢ່າເປັນອາມິດທາຍາດເລີຍ" ບິນທະບາດນີ້ເປັນອາມິດແນວໜຶ່ງ ທາງທີ່ດີ ເຮົາຈະບໍ່ສັນບິນທະບາດນີ້ແລ້ວໃຫ້ວັນຄືນຜ່ານພົ້ນໄປແນວນີ້ ດ້ວຍຄວາມຫິວ ແລະ ຄວາມອ່ອນເພຍນີ້ແລ" ພິກຂຸຈຶ່ງບໍ່ສັນບິນທະບາດນັ້ນ ແລ້ວໃຫ້ວັນຄືນນັ້ນຜ່ານພົ້ນໄປແນວນີ້ ດ້ວຍຄວາມຫິວແລະຄວາມອ່ອນເພຍນັ້ນແລ

ລຳດັບນັ້ນ ພິກຂຸອົງທີ ໘ ໄດ້ມີຄວາມຄິດແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າໄດ້ສະເຫວີຍສຳເລັດຫ້າມພັດຮຽບຮ້ອຍແລ້ວ ສິ້ນສຸດພັດຕະກິດ ມີຄວາມສຸກຕາມຄວາມຕ້ອງການແລ້ວ ແຕ່ບິນທະບາດຂອງພຣະຜູ້ມີພຣະພາກເຈົ້ານີ້ຍັງມີເຫຼືອຈະຕ້ອງຖິ້ມ ຫາກເຮົາຈະບໍ່ສັນ ບັດນີ້ ພຣະຜູ້ມີພຣະພາກເຈົ້າກໍຈະຊົງຖິ້ມລົງເທິງພື້ນທີ່ປາສະຈາກຂອງສົດຂຽວ ຫຼື ຊົງຖອກລົງໃນນ້ຳທີ່ປາສະຈາກ ໂຕສັດ ທາງທີ່ດີ ເຮົາຄວນສັນບິນທະບາດນີ້ບັນເທົາຄວາມຫິວແລະຄວາມອ່ອນເພຍ ແລ້ວໃຫ້ວັນຄືນຜ່ານພົ້ນໄປແນວນີ້" ພິກຂຸຈຶ່ງສັນບິນທະບາດນັ້ນບັນເທົາຄວາມຫິວແລະຄວາມ ອ່ອນເພຍແລ້ວໃຫ້ວັນຄືນນັ້ນຜ່ານພົ້ນໄປແນວນີ້

ພິກຂຸທັງຫຼາຍ ພິກຂຸ (ອົງທີ ໘) ນັ້ນສັນບິນທະບາດນັ້ນບັນເທົາຄວາມຫິວແລະຄວາມອ່ອນເພຍແລ້ວໃຫ້ວັນຄືນນັ້ນຜ່ານພົ້ນໄປແນວນີ້ ແຕ່ພິກຂຸອົງທຳອິດນັ້ນກໍຍັງເປັນຜູ້ຄວນບູຊາແລະສັນເສີນກວ່າ ຂໍ້ນັ້ນຍ້ອນເຫດໃດ ຍ້ອນການບໍ່ສັນບິນທະບາດຂອງພິກຂຸອົງທຳອິດນັ້ນ ຈັກເປັນໄປເພື່ອຄວາມມັກໜ້ອຍ ສັນໂດດ ຂັດເກົາ ລ້ຽງງ່າຍ ຜາຣົບຄວາມພຽນ ສິ້ນການລະນານ ຍ້ອນເຫດນັ້ນ ທ່ານທັງຫຼາຍ ຈົ່ງເປັນທຳທາຍາດຂອງເຮົາເທີ້ນ ຢ່າເປັນອາມິດທາຍາດເລີຍ

ຍ້ອນເຮົາກໍມີຄວາມອີດູໃນທ່ານທັງຫຼາຍຢູ່ວ່າ "ເຮັດແນວໃດນໍ? ສາວົກທັງຫຼາຍຂອງເຮົາຈະເພິ່ງເປັນທຳທາຍາດ ບໍ່ເປັນອາມິດທາຍາດ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະດຳຣັດນີ້ແລ້ວ ພຣະສຸຄົດເຈົ້າເມື່ອຕັດພຣະດຳຣັດນີ້ແລ້ວ ກໍສະເດັດລຸກຈາກອາສະນະເຂົ້າໄປສູ່ພຣະວິຫານ

## ຄວາມບໍ່ສົນໃຈສຶກສາວິເວກ

[໓໑] ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດຈາກໄປໄດ້ບໍ່ດົນ ທ່ານພຣະສາຣີບຸດ ໄດ້ຮຽກພິກຂຸທັງຫຼາຍໃນວິຫານນັ້ນມາກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ" ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ ດ້ວຍເຫດທີ່ໃດນໍ? ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ[໑] ສາວົກທັງຫຼາຍບໍ່ສົນໃຈສຶກສາວິເວກ ດ້ວຍເຫດທີ່ໃດນໍ? ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ ສາວົກທັງຫຼາຍສົນໃຈສຶກສາວິເວກ"

ພິກຂຸເຫຼົ່ານັ້ນ ຕອບວ່າ "ທ່ານຜູ້ມີອາຍຸ ພວກຂ້າພະເຈົ້າມາຈາກບ່ອນໄກເພື່ອຈະຮູ້ເນື້ອຄວາມແຫ່ງພາສິດນີ້ໃນສຳນັກຂອງທ່ານພຣະສາຣີບຸດ ພວກຂ້າພະເຈົ້າຂໍໂອກາດ ຂໍທ່ານ ພຣະສາຣີບຸດໄດ້ໂຜດສະແດງເນື້ອຄວາມແຫ່ງພາສິດນັ້ນເທີ້ນ ເພື່ອພິກຂຸທັງຫຼາຍ ເມື່ອໄດ້ຟັງແລ້ວຈະຊົງຈຳໄວ້ໄດ້"

ທ່ານພຣະສາຣີບຸດກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ ຖ້າແນວນັ້ນ ພວກທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້າພະເຈົ້າຈັກກ່າວ"

ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ ທ່ານພຣະສາຣີບຸດໄດ້ກ່າວເລື້ອງນີ້ວ່າ "ທ່ານຜູ້ມີອາຍຸທັງຫຼາຍ ດ້ວຍເຫດທີ່ໃດນໍ ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ ສາວົກທັງຫຼາຍບໍ່ສົນໃຈສຶກສາວິເວກ ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ ສາວົກທັງຫຼາຍໃນພຣະທຳວິໄນນີ້ສົນໃຈສຶກສາວິເວກ ບໍ່ລະທຳທັງຫຼາຍທີ່ພຣະສາດສະດາຕັດວ່າ ຄວນລະ ເປັນຜູ້ມັກຫຼາຍ ເປັນຜູ້ຍໍ້ຍ່ອນ[໒] ເປັນຜູ້ນຳໃນໂອກກະມະນະທຳ[໓] ຖືເບົາ[໑] ໃນປະວິເວກ[໒] ບັນດາພິກຂຸເຫຼົ່ານັ້ນ ພິກຂຸຜູ້

---

໑ **ວິເວກ** (ຄວາມສະຫງັດ) ໃນທີ່ນີ້ໝາຍເຖິງວິເວກ ໓ ປະການ ຄື (໑) ກາຍວິເວກ ສະຫງັດກາຍ (໒) ຈິດຕະວິເວກ ສະຫງັດຈິດ (໓) ອຸປະທິວິເວກ ສະຫງັດກິເລດ (ມ.ມູ.ອ. ໑/໓໑/໑໐໗)

໒ **ຍໍ້ຍ່ອນ** ໝາຍເຖິງຍຶດຖືປະຕິບັດຕາມຄຳສັ່ງສອນຍ່ອນຍານ (ມ.ມູ.ອ. ໑/໓໑/໑໑໐, ອັງ.ທຸກ.ອ. ໒/໔໕/໕໓)

໓ **ໂອກກະມະນະທັມ** ໃນທີ່ນີ້ໝາຍເຖິງນິວອນ ໕ ປະການ ຄື (໑) ກາມສັນທະ (ຄວາມພໍໃຈໃນກາມ) (໒) ພະຍາບາດ (ຄວາມຄິດຮ້າຍ) (໓) ຖີນະມິດທະ (ຄວາມຫົດຫູ່ແລະງ່ວມເຫງົາ) (໔) ອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ) (໕) ວິຈິກິດສາ (ຄວາມລັງເລສົງໄສ) (ມ.ມູ.ອ. ໑/໓໑/໑໑໐, ອັງ.ທຸກ.ອ. ໒/໔໕/໕໓)

ເປັນເຖຣະເປັນຜູ້ຄວນຖືກຕິຕຽນໂດຍຖານະ[๓] ໓ ປະການ ຄື ເປັນຜູ້ຄວນຖືກຕິຕຽນໂດຍຖານະທີ ໑ ວ່າ "ເມື່ອພຣະສາດສະດາປະທັບ ຢູ່ຢ່າງມີວິເວກ ສາວົກທັງຫຼາຍບໍ່ສົນໃຈສຶກສາວິເວກ" ເປັນຜູ້ຄວນຖືກຕິຕຽນໂດຍຖານະ ທີ ໒ ວ່າ "ສາວົກທັງຫຼາຍ ບໍ່ລະທຳທັງຫຼາຍທີ່ພຣະສາດສະດາຕັດວ່າ ຄວນລະ" ແລະ ເປັນຜູ້ຄວນຖືກຕິຕຽນໂດຍຖານະທີ ໓ ວ່າ "ສາວົກທັງຫຼາຍເປັນຜູ້ມັກຫຼາຍ ເປັນຜູ້ຍໍ່ຍ່ອນ ເປັນຜູ້ນຳໃນໂອກກະມະນະທຳ ຖືເບົາໃນປະວິເວກ" ພິກຂຸຜູ້ເປັນເຖຣະເປັນຜູ້ຄວນຖືກຕິຕຽນໂດຍຖານະ ໓ ປະການນີ້ ບັນດາພິກຂຸເຫຼົ່ານັ້ນ ພິກຂຸຜູ້ເປັນມັດຊິມະ ຯລຯ ພິກຂຸຜູ້ເປັນນະວະກະເປັນຜູ້ຄວນຖືກຕິຕຽນໂດຍຖານະ ໓ ປະການ ຄື

ເປັນຜູ້ຄວນຖືກຕິຕຽນໂດຍຖານະທີ ໑ ວ່າ "ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ ສາວົກທັງຫຼາຍບໍ່ສົນໃຈສຶກສາວິເວກ"

ເປັນຜູ້ຄວນຖືກຕິຕຽນໂດຍຖານະທີ ໒ ວ່າ "ສາວົກທັງຫຼາຍ ບໍ່ລະທຳທັງຫຼາຍທີ່ພຣະສາດສະດາຕັດວ່າ ຄວນລະ"

ເປັນຜູ້ຄວນຖືກຕິຕຽນໂດຍຖານະທີ ໓ ວ່າ "ສາວົກທັງຫຼາຍເປັນຜູ້ມັກຫຼາຍ ເປັນຜູ້ຍໍ້ຍ່ອນ ເປັນຜູ້ນຳໃນໂອກກະມະນະທຳ ຖືເບົາໃນປະວິເວກ"

ພິກຂຸຜູ້ເປັນນະວະກະເປັນຜູ້ຄວນຖືກຕິຕຽນໂດຍຖານະ ໓ ປະການນີ້

ທ່ານຜູ້ມີອາຍຸທັງຫຼາຍ ດ້ວຍເຫດທີ່ນີ້ແລ ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ ສາວົກທັງຫຼາຍຊື່ວ່າ ບໍ່ສົນໃຈສຶກສາວິເວກ

## ຄວາມສົນໃຈສຶກສາວິເວກ

[໓໒] ທ່ານຜູ້ມີອາຍຸທັງຫຼາຍ ດ້ວຍເຫດທີ່ໃດນໍ ເມື່ອພຣະສາດສະດາປະທັບຢູ່ ຢ່າງມີວິເວກ ສາວົກທັງຫຼາຍສົນໃຈສຶກສາວິເວກ ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ ສາວົກທັງຫຼາຍໃນພຣະທຳວິໄນນີ້ສົນໃຈສຶກສາວິເວກ ລະທຳທັງຫຼາຍທີ່ພຣະສາດສະດາ ຕັດວ່າ ຄວນລະ

---

໔ **ຖືເບົາ** ໃນທີ່ນີ້ໝາຍເຖິງບໍ່ບຳເພັນອຸປະທິວິເວກໃຫ້ບໍລິບູນ, ອັນໜຶ່ງ ໝາຍເຖິງທອດຖິ້ມໜ້າທີ່ໃນວິເວກ ໓ ປະການ ຄື ກາຍວິເວກ ຈິດຕະວິເວກ ແລະ ອຸປະທິວິເວກ (ມ.ມູ.ອ. ໑/໓໑/໑໑໐, ອັງ.ທຸກ.ອ. ໒/໔໕/໕໓)

໕ **ປະວິເວກ** ໝາຍເຖິງອຸປະທິວິເວກ ຄື ສະພາວະອັນເປັນທີ່ຕັ້ງທີ່ຊົງໄວ້ແຫ່ງທຸກ ໄດ້ແກ່ ກາມ ກິເລດ ປັນຈະຂັນ ແລະອະພິສັງຂານ ກ່າວຄືນິບພານ (ອັງ.ທຸກ.ອ. ໒/໔໕/໕໓)

໖ **ຖານະ** ໃນທີ່ນີ້ໝາຍເຖິງເຫດ ແທ້ຈິງ ຄຳວ່າ "ຖານະ" ມີຄວາມໝາຍ ໔ ໄນ ຄື (໑) ອິດສະຣິຍະ (ຕຳແໜ່ງ, ຄວາມເປັນໃຫຍ່) (໒) ຖິຕິ (ເປົ້າໝາຍ,ທີ່ຕັ້ງ) (໓) ຂະນະ (ການ) (໔) ການນະ (ເຫດ) ໃນທີ່ນີ້ໝາຍເຖິງເຫດ (ມ.ມູ.ອ. ໑/໓໑/໑໑໐)

ບໍ່ເປັນຜູ້ມັກຫຼາຍ ບໍ່ເປັນຜູ້ຍໍ້ຍ່ອນ ບໍ່ເປັນຜູ້ນຳໃນໂອກກະມະນະທຳ ບໍ່ຖືເບົາໃນປະວິເວກ ບັນດາພິກຂຸເຫຼົ່ານັ້ນ ພິກຂຸຜູ້ເປັນເຖຣະເປັນຜູ້ຄວນສັນເສີນໂດຍຖານະ ໓ ປະການ ຄື ເປັນຜູ້ຄວນສັນເສີນໂດຍຖານະທີ ໑ ວ່າ "ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ ສາວົກທັງຫຼາຍສຶບໃຈສຶກສາວິເວກ" ເປັນຜູ້ຄວນສັນເສີນໂດຍຖານະທີ ໒ ວ່າ "ສາວົກທັງຫຼາຍ ລະທຳທັງຫຼາຍທີ່ພຣະສາດສະດາຕັດວ່າ ຄວນລະ" ເປັນຜູ້ຄວນສັນເສີນໂດຍຖານະທີ ໓ ວ່າ "ສາວົກທັງຫຼາຍບໍ່ເປັນຜູ້ມັກຫຼາຍ ບໍ່ເປັນຜູ້ຍໍ້ຍ່ອນ ບໍ່ເປັນຜູ້ນຳໃນໂອກກະມະນະທຳ ບໍ່ຖືເບົາໃນປະວິເວກ" ບັນດາພິກຂຸເຫຼົ່ານັ້ນ ພິກຂຸຜູ້ເປັນ ມັດຊິມະ ໗໒໗ ພິກຂຸຜູ້ເປັນນະວະກະເປັນຜູ້ຄວນສັນເສີນໂດຍຖານະ ໓ ປະການ ຄື ເປັນຜູ້ຄວນສັນເສີນໂດຍຖານະທີ ໑ ວ່າ "ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ ສາວົກທັງຫຼາຍສຶບໃຈສຶກສາວິເວກ" ເປັນຜູ້ຄວນສັນເສີນໂດຍຖານະທີ ໒ ວ່າ "ສາວົກທັງຫຼາຍ ລະທຳທັງຫຼາຍ ທີ່ພຣະສາດສະດາຕັດວ່າ ຄວນລະ" ເປັນຜູ້ຄວນສັນເສີນໂດຍຖານະທີ ໓ ວ່າ "ສາວົກທັງຫຼາຍ ບໍ່ເປັນຜູ້ມັກຫຼາຍ ບໍ່ເປັນຜູ້ຍໍ້ຍ່ອນ ບໍ່ເປັນຜູ້ນຳໃນໂອກກະມະນະທຳ ບໍ່ຖືເບົາໃນປະວິເວກ" ພິກຂຸຜູ້ເປັນນະວະກະເປັນຜູ້ຄວນສັນເສີນໂດຍຖານະ ໓ ປະການນີ້ ດ້ວຍເຫດທໍ່ນີ້ແລ ເມື່ອພຣະສາດສະດາປະທັບຢູ່ຢ່າງມີວິເວກ ສາວົກທັງຫຼາຍຊື່ວ່າ ສຶບໃຈສຶກສາວິເວກ

## ມັດຊິມາປະຕິປະທາ

[໓໓] ທ່ານຜູ້ມີອາຍຸທັງຫຼາຍ ບັນດາທຳເຫຼົ່ານັ້ນ ໂລພະແລະໂທສະເປັນບາບ ມັດຊິມາປະຕິປະທາມີຢູ່ເພື່ອລະໂລພະແລະໂທສະ ເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ມັດຊິມາປະຕິປະທາອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ຄື ອັນໃດ?

ຄື ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ດຳຣິຖືກ)
໓. ສຳມາວາຈາ (ເຈລະຈາຖືກ)
໔. ສຳມາກຳມັນຕະ (ກະທຳຖືກ)
໕. ສຳມາອາຊີວະ (ລ້ຽງຊີບຖືກ)
໖. ສຳມາວາຍາມະ (ພະຍາຍາມຖືກ)
໗. ສຳມາສະຕິ (ຣະນຶກຖືກ)
໘. ສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

ນີ້ແລ ຄື ມັດຊິມາປະຕິປະທາ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປ ເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ທ່ານຜູ້ມີອາຍຸທັງຫຼາຍ ບັນດາທຳເຫຼົ່ານັ້ນ ໂກທະ (ຄວາມໂກດ) ອຸປະນາຫະ (ຄວາມຜູກໂກດ) ເປັນບາບ ມັດຊິມາປະຕິປະທາມີຢູ່ ເພື່ອລະໂກທະ ແລະ ອຸປະນາຫະ ເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ປະລາສະ (ຄວາມຕີສະເໝີ) ຯລຯ ອິດສາ (ຄວາມຣິດສະຫຍາ) ມັດສະຣິຍະ (ຄວາມຂີ້ຖີ່) ຯລຯ ມາຍາ (ມານຍາ) ສາເຖີຍຍະ (ຄວາມໂອ້ອວດ) ຯລຯ ຖຳພະ (ຄວາມຫົວດື້) ສາຣຳພະ (ຄວາມແຂ່ງດີ) ຯລຯ ມານະ (ຄວາມຖືຕົວ) ອະຕິມານະ (ຄວາມດູໝິ່ນເຂົາ) ຯລຯ ມະທະ (ຄວາມມົວເມົາ) ແລະ ປະມາທະ (ຄວາມຜະໝາດ) ເປັນບາບ ມັດຊິມາປະຕິປະທາມີຢູ່ເພື່ອລະມະທະ ແລະ ປະມາທະ ເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປ ເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ມັດຊິມາປະຕິປະທາ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ຄືອັນໃດ?

ຄື ອະຣິຍະມັກມີອົງ ໘ ໄດ້ແກ່

| | |
|---|---|
| ໑. ສຳມາທິດຖິ | ໒. ສຳມາສັງກັບປະ |
| ໓. ສຳມາວາຈາ | ໔. ສຳມາກຳມັນຕະ |
| ໕. ສຳມາອາຊີວະ | ໖. ສຳມາວາຍາມະ |
| ໗. ສຳມາສະຕິ | ໘. ສຳມາສະມາທິ |

ນີ້ແລ ຄື ມັດຊິມາປະຕິປະທາ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປ ເພື່ອສະຫງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ”

ທ່ານພຣະສາຣີບຸດ ໄດ້ກ່າວພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊື່ນຊົມພາສິດຂອງທ່ານພຣະສາຣີບຸດ ດັ່ງນີ້ແລ

**ທຳມະທາຍາດສູດທີ ໓ ຈົບ**

# ໔. ພະຍະເພຣະວະສູດ

## ວ່າດ້ວຍຄວາມຂີ້ຢ້ານ

[໓໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ພາມຊື່ຊານຸດໂສນີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ກຸນລະບຸດທັງຫຼາຍ ມີສັດທາອອກຈາກເຮືອນບວດເປັນບັນພະຊິດເຈາະຈົງທ່ານພຣະໂຄດົມ ທ່ານພຣະໂຄດົມ ຊົງເປັນຫົວໜ້າຂອງກຸນລະບຸດເຫຼົ່ານັ້ນ ເປັນຜູ້ມີອຸປະກາຣະຫຼາຍ ເປັນຜູ້ແນະນຳໃຫ້ຖືຕາມ ຊຸມຊົນນັ້ນ ຖືເອົາແບບຢ່າງທ່ານພຣະໂຄດົມບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ຂໍ້ນີ້ ເປັນແນວນັ້ນ ພາມ ຂໍ້ນີ້ ເປັນແນວນັ້ນກຸນລະບຸດທັງຫຼາຍ ມີສັດທາອອກຈາກເຮືອນບວດເປັນບັນພະຊິດເຈາະຈົງເຮົາ ເຮົາເປັນຫົວໜ້າຂອງພວກເຂົາ ເປັນຜູ້ມີອຸປະກາຣະຫຼາຍ ເປັນຜູ້ແນະນຳໃຫ້ຖືຕາມ ຊຸມຊົນນັ້ນຖືເອົາແບບຢ່າງເຮົາ"

ຊານຸດໂສນີພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ເສນາສະນະອັນງຽບສະຫງັດ ຄືປ່າໂລ່ງ ແລະປ່າຕຶບ[໑] ຢູ່ລຳບາກ ເຮັດວິເວກ[໒] ໄດ້ຍາກ ໃນການຢູ່ໂດດດ່ຽວກໍອະພິຣົມໄດ້ຍາກ ປ່າທັງຫຼາຍເຫັນຈະນຳພາຈິດຂອງພິກຂຸຜູ້ຍັງບໍ່ໄດ້ສະມາທິ[໓] ໃຫ້ຫວາດຫວັ່ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ຂໍ້ນີ້ເປັນແນວນັ້ນ ພາມ ຂໍ້ນີ້ເປັນແນວນັ້ນ ເສນາສະນະອັນງຽບສະຫງັດຄືປ່າໂລ່ງ ແລະ ປ່າຕຶບ ຢູ່ລຳບາກ ເຮັດວິເວກໄດ້ຍາກ ໃນການຢູ່ໂດດດ່ຽວກໍອະພິຣົມໄດ້ຍາກ ປ່າທັງຫຼາຍເຫັນຈະນຳພາຈິດຂອງພິກຂຸຜູ້ຍັງບໍ່ໄດ້ສະມາທິໃຫ້ຫວາດຫວັ່ນ"

---

໑ **ປ່າໂປ່ງ** (ອະຣັນຍະ) ໝາຍເຖິງປ່າຢູ່ນອກເສົາເຂດເມືອງອອກໄປຢ່າງໜ້ອຍຊົ່ວ ໕໐໐ ລູກທະນູ ປ່າຕຶບ (ວະນະປັດຖະ) ໝາຍເຖິງສະຖານທີ່ທີ່ບໍ່ມີຄົນຢູ່ອາໄສ ເລີຍເຂດໝູ່ບ້ານໄປ (ມ.ມູ.ອ. ໑/໓໔/໑໔໑, ອັງ.ທຸກ.ອ. ໔/໓໑/໓໐)

໔ **ວິເວກ** ໃນທີ່ນີ້ໝາຍເຖິງກາຍວິເວກ(ສະຫງັດກາຍ) (ມ.ມູ.ອ. ໑/໓໔/໑໔໔, ອັງ.ທະສະກະ.ອ. ໓/໙/໓໗໐)

໓ **ສະມາທິ** ໃນທີ່ນີ້ໝາຍເຖິງອຸປະຈານສະມາທິ ຫຼືອັບປະນາສະມາທິ (ມ.ມູ.ອ. ໑/໓໔/໑໔໔, ອັງ.ທະສະກະ.ອ. ໓/໙/໓໗໐)

## ເຫດໃຫ້ສະດຸ້ງຢ້ານການຢູ່ໃນເສນາສະນະປ່າ ໑៦ ປະການ

[៣៤] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ແຕ່ກ່ອນ ເຮົາເປັນໂພທິສັດ ຍັງບໍ່ໄດ້ຕັດສະຣູ້ໄດ້ມີຄວາມດຳຣິວ່າ "ເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າຕຶບ ຢູ່ລຳບາກເຮັດວິເວກໄດ້ຍາກ ໃນການຢູ່ໂດດດ່ຽວກໍອະພິຣົມໄດ້ຍາກ ປ່າທັງຫຼາຍເຫັນຈະນຳພາ ຈິດຂອງພິກຂຸຜູ້ຍັງບໍ່ໄດ້ສະມາທິໃຫ້ຫວາດຫວັ່ນ" ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງມີກາຍຍະກຳບໍ່ບໍລິສຸດ ເຂົ້າອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າຕຶບ ສະມະນະ ຫຼື ພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານ ແລະ ຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນ ຄື ມີກາຍຍະກຳບໍ່ບໍລິສຸດ ສ່ວນເຮົາບໍ່ແມ່ນເປັນຜູ້ມີກາຍຍະກຳບໍ່ບໍລິສຸດ ເຂົ້າອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ມີກາຍຍະກຳບໍລິສຸດ ພຣະອະຣິຍະ[៤] ເຫຼົ່າໃດມີກາຍຍະກຳບໍລິສຸດ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງເຊິ່ງຄວາມເປັນຜູ້ມີກາຍຍະກຳບໍລິສຸດນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ມີຄວາມປອດໄພຍາງຍິ່ງເພື່ອຢູ່ໃນປ່າ (໑)

[៣៦] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະຫຼືພາມເຫຼົ່າໃດ ເຫຼົ່າໜຶ່ງເປັນຜູ້ມີວະຈີກຳບໍ່ບໍລິສຸດ ຯລຯ ມີມະໂນກຳບໍ່ບໍລິສຸດ ຯລຯ ມີການ ລ້ຽງຊີບບໍ່ບໍລິສຸດ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານ ແລະ ຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນ ຄື ມີການລ້ຽງຊີບບໍ່ບໍລິສຸດ ສ່ວນເຮົາບໍ່ແມ່ນເປັນຜູ້ມີການລ້ຽງຊີບບໍ່ບໍລິສຸດ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ມີການລ້ຽງຊີບບໍລິສຸດ ພຣະອະຣິຍະເຫຼົ່າໃດມີການລ້ຽງຊີບບໍລິສຸດ ເຂົ້າອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງເຊິ່ງຄວາມເປັນຜູ້ມີການລ້ຽງຊີບບໍລິສຸດນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຍາງຍິ່ງເພື່ອຢູ່ໃນປ່າ (໔-៣-៤)

[៣៧] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະ ຫຼື ພາມເຫຼົ່າໃດ ເຫຼົ່າໜຶ່ງມີປົກກະຕິເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຄວາມກຳໜັດກ້າໃນການມະຄຸນທັງຫຼາຍ ເຂົ້າອາໄສເສນາ

---

[៤] **ພຣະອະຣິຍະ** ໃນທີ່ນີ້ໝາຍເຖິງພຣະພຸດທະເຈົ້າແລະພຣະພຸດທະສາວົກ (ມ.ມູ.ອ. ໑/៣៤/໑៤៣) ແລະເບິ່ງທຽບເຊີງອັດຖະ ຂໍ້ ៤ ໜ້າ ៤ ໃນເຫລັ້ມນີ້

ສະນະອັນງຽບ ສະຫງັດ ຄື ປ່າໂລ່ງແລະປ່າຕຶບ ສະມະນະ ຫຼື ພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານ ແລະ ຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນຄືມີປົກກະຕິເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ແລະ ມີຄວາມກຳໜັດກ້າໃນການມະຄຸນ ທັງຫຼາຍ ສ່ວນເຮົາບໍ່ແມ່ນເປັນຜູ້ມີປົກກະຕິເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ບໍ່ມີຄວາມກຳໜັດ ກ້າໃນການມະຄຸນທັງຫຼາຍ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາບໍ່ແມ່ນເປັນຜູ້ມີປົກກະຕິເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ພຣະອະຣິຍະເຫຼົ່າໃດບໍ່ມີປົກກະຕິເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງ ເຊິ່ງຄວາມເປັນຜູ້ບໍ່ມີປົກກະຕິເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢາງຍິ່ງເພື່ອຢູ່ໃນປ່າ (໕)

[໓໗] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງ ມີຈິດວິບັດມີຄວາມດຳຣິຊົ່ວຮ້າຍ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງ ແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານ ແລະ ຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນ ຄື ມີຈິດວິບັດແລະມີຄວາມດຳຣິຊົ່ວຮ້າຍ

ສ່ວນເຮົາບໍ່ແມ່ນເປັນຜູ້ມີຈິດວິບັດ ບໍ່ແມ່ນມີຄວາມດຳຣິຊົ່ວຮ້າຍ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງ ແລະ ປ່າຕຶບ ເຮົາເປັນຜູ້ມີຈິດເມດຕາ ພຣະອະຣິຍະເຫຼົ່າໃດມີຈິດເມດຕາ ເຂົ້າອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງ ເຊິ່ງຄວາມເປັນຜູ້ມີຈິດເມດຕານັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢາງຍິ່ງເພື່ອຢູ່ໃນປ່າ (໖)

[໓໘] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະຫຼືພາມເຫຼົ່າໃດ ເຫຼົ່າໜຶ່ງຖືກຖີນະມິດທະ (ຄວາມຫົດຫູ່ແລະງ່ວງເຫງົາ) ກຸ້ມລຸມແລ້ວ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານແລະຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນຄືການຖືກ ຖີນະມິດທະກຸ້ມລຸມ ສ່ວນເຮົາບໍ່ແມ່ນເປັນຜູ້ຖືກຖີນະມິດທະກຸ້ມລຸມ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ປາສະຈາກຖີນະມິດທະ ພຣະອະຣິຍະເຫຼົ່າໃດ ເປັນຜູ້ປາສະຈາກຖີນະມິດທະ ເຂົ້າອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງ ເຊິ່ງຄວາມເປັນຜູ້ປາສະຈາກຖີນະມິດທະນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢ່າງຍິ່ງເພື່ອຢູ່ໃນປ່າ (໗)

[໔໐] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະຫຼືພາມເຫຼົ່າໃດ ເຫຼົ່າໜຶ່ງເປັນຜູ້ຟຸ້ງຊ່ານ ມີຈິດບໍ່ສະງົບ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານແລະຄວາມບໍ່ກ້າ ອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນຄືເປັນຜູ້ຟຸ້ງຊ່ານແລະມີຈິດບໍ່ສະງົບ ສ່ວນເຮົາ ບໍ່ແມ່ນເປັນຜູ້ຟຸ້ງຊ່ານ ບໍ່ແມ່ນມີຈິດບໍ່ສະງົບ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ມີຈິດສະງົບແລ້ວ ພຣະອະຣິຍະເຫຼົ່າໃດເປັນຜູ້ມີຈິດສະງົບ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງ ເຊິ່ງຄວາມເປັນຜູ້ມີຈິດສະງົບນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢ່າງຍິ່ງເພື່ອຢູ່ໃນປ່າ (໘)

[໔໑] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະຫຼືພາມເຫຼົ່າໃດ ເຫຼົ່າໜຶ່ງເປັນຜູ້ເຄືອບແຄງສົງໄສ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານແລະຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນຄືຄວາມເຄືອບແຄງສົງໄສ ສ່ວນເຮົາບໍ່ແມ່ນເປັນຜູ້ເຄືອບແຄງສົງໄສ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ຂ້າມພົ້ນຄວາມເຄືອບແຄງສົງໄສແລ້ວ ພຣະອະຣິຍະເຫຼົ່າໃດເປັນຜູ້ຂ້າມພົ້ນຄວາມສົງໄສແລ້ວ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະ ເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງ ເຊິ່ງຄວາມເປັນຜູ້ຂ້າມພົ້ນຄວາມສົງໄສນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢ່າງຍິ່ງເພື່ອຢູ່ໃນປ່າ (໙)

[໔໒] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະຫຼືພາມເຫຼົ່າໃດ ເຫຼົ່າໜຶ່ງເປັນຜູ້ຍົກຕົນຂົ່ມຜູ້ອື່ນ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານແລະຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນຄືການຍົກຕົນຂົ່ມຜູ້ອື່ນ ສ່ວນເຮົາບໍ່ແມ່ນເປັນຜູ້ຍົກຕົນຂົ່ມຜູ້ອື່ນ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ບໍ່ຍົກຕົນຂົ່ມຜູ້ອື່ນ ພຣະອະຣິຍະເຫຼົ່າໃດເປັນຜູ້ບໍ່ຍົກຕົນຂົ່ມຜູ້ອື່ນ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງເຊິ່ງຄວາມເປັນຜູ້ບໍ່ຍົກຕົນຂົ່ມຜູ້ອື່ນນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢ່າງຍິ່ງເພື່ອຢູ່ໃນປ່າ (໑໐)

[໔໓] ພາມ ເຮົານັ້ນ ໄດ້ມີຄວາມດຳຣິວ່າ "ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງເປັນຜູ້ສະດຸ້ງຢ້ານ ແລະ ມັກຢ້ານ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານ ແລະ ຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນ ຄື ຄວາມສະດຸ້ງຢ້ານແລະມັກຢ້ານ ສ່ວນເຮົາບໍ່ແມ່ນເປັນຜູ້ສະດຸ້ງຢ້ານແລະມັກຢ້ານ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ປາສະຈາກຄວາມຂົນຫົວລຸກ ພຣະອະຣິຍະເຫຼົ່າໃດ ເປັນຜູ້ປາສະຈາກຄວາມຂົນຫົວລຸກ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງ ເຊິ່ງຄວາມເປັນຜູ້ປາສະຈາກຄວາມສະດຸ້ງຢ້ານນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢາງຍິ່ງເພື່ອຢູ່ໃນປ່າ (໑໑)

[໔໔] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະຫຼືພາມເຫຼົ່າໃດ ເຫຼົ່າໜຶ່ງປາຖະໜາລາບສັກກາຣະແລະຄວາມສັນເສີນ ເຂົ້າອາໄສເສນາສະນະອັນງຽບ ສະຫງັດຄືປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານແລະຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນຄືຄວາມປາຖະໜາລາບສັກກາຣະ ແລະ ຄວາມສັນເສີນ ສ່ວນເຮົາບໍ່ແມ່ນເປັນຜູ້ປາຖະໜາລາບສັກກາຣະ ແລະ ຄວາມສັນເສີນ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ມີຄວາມປາຖະໜາໜ້ອຍ ພຣະອະຣິຍະເຫຼົ່າໃດມີຄວາມປາຖະໜາໜ້ອຍ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງເຊິ່ງຄວາມເປັນຜູ້ມີຄວາມປາຖະໜາໜ້ອຍນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢາງຍິ່ງເພື່ອຢູ່ໃນປ່າ (໑໔)

[໔໕] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງເປັນຜູ້ຂີ້ຄ້ານ ປາສະຈາກຄວາມພຽນ ເຂົ້າອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານ ແລະ ຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນຄືຄວາມເປັນຜູ້ຂີ້ຄ້ານ ປາສະຈາກຄວາມພຽນ ສ່ວນເຮົາບໍ່ແມ່ນເປັນຜູ້ຂີ້ຄ້ານ ບໍ່ແມ່ນປາສະຈາກຄວາມພຽນ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ຜາຣົບຄວາມພຽນ[໑] ພຣະອະຣິຍະເຫຼົ່າໃດເປັນຜູ້ຜາຣົບຄວາມພຽນ ເຂົ້າອາໄສ

[໑] **ຜາຣົບຄວາມພຽນ** ໃນທີ່ນີ້ໝາຍເຖິງມີຄວາມພຽນທີ່ບໍລິບູນ ແລະ ມີຄວາມພຽນທີ່ປະຄັບປະຄອງໄວ້ສະໝ່ຳສະເໝີ ບໍ່ຢ່ອນຫຼາຍ ບໍ່ຕຶງນັກ ບໍ່ໃຫ້ຈິດປຸງແຕ່ງພາຍໃນ ບໍ່ໃຫ້ຟຸ້ງຊ່ານພາຍນອກ ຄຳວ່າ ຄວາມພຽນ ໃນທີ່ນີ້ໝາຍເອົາ ທັງ ຄວາມພຽນທາງກາຍ ເຊັ່ນ ພຽນພະຍາຍາມທາງກາຍຕະຫຼອດຄືນແລະວັນ ເໝືອນໃນປະໂຍກວ່າ "ພິກຂຸໃນທຳວິໄນນີ້ ຊຳຣະຈິດໃຫ້

ເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງເຊິ່ງຄວາມເປັນຜູ້ຜາຣົບຄວາມພຽນນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢາງຍິ່ງເພື່ອຢູ່ໃນປ່າ (໑໓)

[໔໖] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະ ຫຼື ພາມເຫຼົ່າໃດ ເຫຼົ່າໜຶ່ງຂາດສະຕິສຳປະຊັນຍະ (ຄວາມຣະນຶກໄດ້ແລະຄວາມຮູ້ຕົວ) ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານແລະຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນຄືຄວາມເປັນຜູ້ຂາດສະຕິສຳປະຊັນຍະ ສ່ວນເຮົາບໍ່ແມ່ນເປັນຜູ້ຂາດສະຕິສຳປະຊັນຍະ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ມີສະຕິໝັ້ນຄົງ ພຣະອະຣິຍະເຫຼົ່າໃດເປັນຜູ້ມີສະຕິໝັ້ນຄົງ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງ ເຊິ່ງຄວາມເປັນຜູ້ມີສະຕິໝັ້ນຄົງນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢາງຍິ່ງເພື່ອຢູ່ໃນປ່າ (໑໔)

[໔໗] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະຫຼືພາມເຫຼົ່າໃດ ເຫຼົ່າໜຶ່ງມີຈິດບໍ່ຕັ້ງໝັ້ນ ມີຈິດດີ້ນຣົນກວັດແກວ່ງ ເຂົ້າອາໄສເສນາສະນະອັນງຽບສະຫງັດຄື ປ່າໂລ່ງແລະປ່າຕຶບ ສະມະນະ ຫຼື ພາມຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານ ແລະ ຄວາມບໍ່ກ້າອັນເປັນອະກຸສົນ ຍ້ອນເຫດແຫ່ງໂທດຂອງຕົນ ຄື ຄວາມເປັນຜູ້ມີຈິດບໍ່ຕັ້ງໝັ້ນ ແລະ ມີຈິດດີ້ນຣົນກວັດແກວ່ງ ສ່ວນເຮົາບໍ່ແມ່ນເປັນຜູ້ມີຈິດບໍ່ຕັ້ງໝັ້ນ ມີຈິດບໍ່ດີ້ນຣົນກວັດແກວ່ງ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ສົມບູນດ້ວຍສະມາທິ ພຣະອະຣິຍະເຫຼົ່າໃດເປັນຜູ້ສົມບູນດ້ວຍສະມາທິ ເຂົ້າອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງ ເຊິ່ງຄວາມເປັນຜູ້ສົມບູນດ້ວຍສະມາທິນັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ປອດໄພຢາງຍິ່ງເພື່ອຢູ່ໃນປ່າ (໑໕)

[໔໘] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງເປັນຄົນ

---

ບໍລິສຸດຈາກທຳທີ່ກັ້ນຈິດບໍ່ໃຫ້ບັນລຸຄວາມດີດ້ວຍການຍ່າງຈົງກົມ ດ້ວຍການນັ່ງຕະຫຼອດວັນ" (ອະພິ.ວິ.(ແປ) ໓໕/໕໑໗/໓໗໑) ແລະ ຄວາມພຽນທາງຈິດ ເຊັ່ນ ພຽນພະຍາຍາມຜູກຈິດໄວ້ດ້ວຍການກຳນົດສະຖານທີ່ເປັນຕົ້ນ ເໝືອນໃນປະໂຍກວ່າ "ເຮົາຈະບໍ່ອອກຈາກຖ້ຳນີ້ຈົນກວ່າຈິດຂອງເຮົາຈະລຸດພົ້ນຈາກອາສະວະ ບໍ່ຖືໝັ້ນດ້ວຍອຸປາທານ" (ອັງ.ເອກກະ.ອ. ໑/໑໘/໔໓)

ໂງ່ຈ້າເບົາປັນຍາ ເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ສະມະນະຫຼືພາມ ຜູ້ຈະເລີນເຫຼົ່ານັ້ນ ຍ່ອມປະສົບຄວາມຢ້ານແລະຄວາມບໍ່ກ້າ ອັນເປັນອະກຸສົນ ຍ້ອນເຫດແຫ່ງ ໂທດຂອງຕົນຄືຄວາມເປັນຄົນໂງ່ຈ້າເບົາປັນຍາ ສ່ວນເຮົາ ບໍ່ແມ່ນເປັນຜູ້ໂງ່ຈ້າເບົາປັນຍາ ເຂົ້າ ອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ ເຮົາເປັນຜູ້ສົມບູນດ້ວຍປັນຍາ ພຣະອະ ຣິຍະເຫຼົ່າໃດເປັນຜູ້ສົມບູນດ້ວຍປັນຍາ ເຂົ້າອາໄສ ເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະ ປ່າຕຶບ ເຮົາເປັນຜູ້ໜຶ່ງໃນບັນດາພຣະອະຣິຍະເຫຼົ່ານັ້ນ"

ພາມ ເຮົາເຫັນແຈ້ງ ເຊິ່ງຄວາມເປັນຜູ້ສົມບູນດ້ວຍປັນຍານັ້ນໃນຕົນ ຈຶ່ງເຖິງຄວາມເປັນຜູ້ ປອດໄພຢາງຍິ່ງເພື່ອຢູ່ໃນປ່າ (໑໖)

## ເຫດໃຫ້ສະດຸ້ງຢ້ານການຢູ່ໃນເສນາສະນະປ່າ ໑໖ ປະການ ຈົບ

[໔໙] ພາມ ເຮົານັ້ນໄດ້ມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນຢູ່ໃນເສນາສະນະ ແນວນີ້ ຄື ອາຣາມເຈດີ ວະນະເຈດີ ຣຸກຂະເຈດີ[໑] ອັນເປັນຕາຢ້ານ ເປັນຕາຂົນຫົວລຸກ ໃນຣາຕີທີ່ກຳນົດ ຮູ້ກັນວ່າວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກ ດ້ວຍຫວັງວ່າ "ເຮົາຈະໄດ້ເຫັນຄວາມເປັນ ຕາຢ້ານແລະຄວາມບໍ່ກ້າ" ຕໍ່ມາ ເຮົາໄດ້ຢູ່ໃນເສນາສະນະແລະຣາຕີ ດັ່ງກ່າວແລ້ວນັ້ນ ເມື່ອເຮົາ ຢູ່ໃນເສນາສະນະນັ້ນ ສັດປ່າມາ ນົກຍູງເຮັດໄມ້ໃຫ້ຕົກລົງມາ ຫຼືລົມພັດເສດໃບໄມ້ໃຫ້ຕົກລົງມາ ເຮົານັ້ນໄດ້ມີຄວາມດຳຣິວ່າ "ຄວາມຢ້ານແລະຄວາມບໍ່ກ້າ ນີ້ນັ້ນຍ່ອມເກີດຂຶ້ນແນ່ນອນ" ເຮົານັ້ນ ໄດ້ມີຄວາມດຳຣິວ່າ "ຍ້ອນເຫດໃດ ເຮົາຈຶ່ງຫວັງສະເພາະແຕ່ເລື້ອງຄວາມຢ້ານຢູ່ແນວດຽວ ທາງ ທີ່ດີ ເຮົາຄວນຈະກຳຈັດຄວາມຢ້ານ ແລະ ຄວາມບໍ່ກ້າທີ່ເກີດຂຶ້ນແກ່ເຮົາໃນອິລິຍາບົດທີ່ເຮົາເປັນ ຢູ່ນັ້ນ ໆ ສາ" ເມື່ອເຮົາກຳລັງຈົງກົມຢູ່ ຄວາມຢ້ານ ແລະ ຄວາມບໍ່ກ້າເກີດຂຶ້ນແກ່ເຮົາ ເຮົາຈະບໍ່ ຢືນ ບໍ່ນັ່ງ ບໍ່ນອນ ຈະຈົງກົມຢູ່ ຈົນກວ່າຈະກຳຈັດຄວາມຢ້ານ ແລະ ຄວາມບໍ່ກ້ານັ້ນໄດ້ ເມື່ອ ເຮົາຢືນຢູ່ ຄວາມຢ້ານ ແລະ ຄວາມບໍ່ກ້າເກີດຂຶ້ນແກ່ເຮົາ ເຮົາຈະບໍ່ຈົງກົມ ບໍ່ນັ່ງ ບໍ່ນອນ ຈະຢືນ ຢູ່ຈົນກວ່າຈະກຳຈັດຄວາມຢ້ານ ແລະ ຄວາມບໍ່ກ້ານັ້ນໄດ້ ເມື່ອເຮົານັ່ງຢູ່ ຄວາມຢ້ານແລະຄວາມ ບໍ່ກ້າເກີດຂຶ້ນແກ່ເຮົາ ເຮົາຈະ ບໍ່ນອນ ບໍ່ຢືນ ບໍ່ຈົງກົມ ຈະນັ່ງຢູ່ ຈົນກວ່າຈະກຳຈັດຄວາມຢ້ານ ແລະຄວາມບໍ່ກ້ານັ້ນໄດ້ ເມື່ອເຮົານອນຢູ່ ຄວາມຢ້ານແລະຄວາມບໍ່ກ້າເກີດຂຶ້ນແກ່ເຮົາ ເຮົາຈະບໍ່ ນັ່ງ ບໍ່ຢືນ ບໍ່ຈົງກົມ ຈະນອນຢູ່ຈົນກວ່າຈະກຳຈັດຄວາມຢ້ານ ແລະ ຄວາມບໍ່ກ້ານັ້ນໄດ້

[໑] **ອາຣາມເຈດີ** ໝາຍເຖິງສະຖານທີ່ທີ່ງົດງາມດ້ວຍໄມ້ດອກແລະຕົ້ນໄມ້ໃຫ້ຜົນ ທີ່ຮຽກວ່າ ເຈດີ ຍ້ອນເປັນສະຖານທີ່ ກະທຳໃຫ້ວິຈິດ ເຮັດໃຫ້ໜ້າບູຊາ ວົນເຈດີ ໝາຍເຖິງຊາຍປ່າທີ່ຕ້ອງນຳເຄື່ອງການບູຊາໄປສັງເວີຍ ປ່າສຸພະຄະວັນແລະປ່າທີ່ ຕັ້ງສານເປັນທີ່ສະຖິດຂອງເທວະດາເປັນຕົ້ນ ຣຸກຂະເຈດີ ໝາຍເຖິງຕົ້ນໄມ້ໃຫຍ່ທີ່ຄົນເຄົາລົບບູຊາໃກ້ປາກທາງເຂົ້າໝູ່ບ້ານຫຼືນິ ຄົມເປັນຕົ້ນ ໂດຍເຂົ້າໃຈວ່າເປັນບ່ອນຢູ່ຂອງເທວະດາຜູ້ມີລິດ (ມ.ມູ.ອ. ໑/໔໙/໑໔໙)໑-໔ ທີ.ສີ.(ແປ) ໙/໔໑໓/໑໗໘

# ສັດຜູ້ບໍ່ລຸ່ມຫຼົງ

[໔໐] ພາມ ມີສະມະນະພາມພວກໜຶ່ງເຂົ້າໃຈກາງຄືນແທ້ ໆ ວ່າເປັນກາງເວັນ ເຂົ້າໃຈກາງເວັນແທ້ ໆ ວ່າເປັນກາງຄືນ ເຮົາກ່າວການມີຄວາມເຂົ້າໃຈແນວນີ້ ຍ້ອນສະມະນະພາມເຫຼົ່ານັ້ນຢູ່ດ້ວຍຄວາມຫຼົງ ສ່ວນເຮົາເຂົ້າໃຈກາງຄືນແທ້ ໆ ວ່າເປັນ ກາງຄືນ ເຂົ້າໃຈກາງເວັນແທ້ ໆ ວ່າເປັນກາງເວັນ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງຄວນກ່າວກັບເຮົາວ່າ "ສັດຜູ້ບໍ່ມີຄວາມຫຼົງໄດ້ອຸບັດແລ້ວໃນໂລກ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະແກ່ຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ"

[໔໑] ພາມ ເຮົາຜາຣົບຄວາມພຽນບໍ່ຍໍ້ຍ່ອນ ສະຕິກໍໝັ້ນຄົງບໍ່ຟັ່ນເຟືອນ ກາຍສະງົບລະງັບບໍ່ກະສັບກະສ່າຍ ຈິດເປັນສະມາທິມີອາລົມແນ່ວແນ່ ເຮົານັ້ນ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່[໑] ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະ ທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່[໒] ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍບັນລຸ ຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ"[໓] ຍ້ອນ ລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີ ທຸກບໍ່ມີສຸກມີສະຕິບໍລິສຸດຍ້ອນອຸເປກຂາຢູ່[໔]

## ວິດຊາ ໓

[໔໒] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ[໑] ປາສະຈາກ ຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ເຮົານັ້ນຈຶ່ງນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດ

---

໑ ..........

໒ .............

໓ .............

໔ ๑-๔ มี.สี.(แอล) ๙/๔๑๓/๑๗๘

໑ **ກິເລດພຽງດັ່ງເນີນ** (ອັງຄະນະ) ໝາຍເຖິງກິເລດພຽງດັ່ງເນີນຄືຣາຄະ ໂທສະ ໂມຫະ ມົນທິນ ຫຼືເປືອກຕົມ ໃນທີ່ບາງແຫ່ງ ໝາຍເຖິງພື້ນທີ່ເປັນເນີນຕາມທີ່ເວົ້າກັນວ່າ ເນີນໂພ ເນີນເຈດີ ເປັນຕົ້ນ ແຕ່ໃນທີ່ນີ້ ທ່ານພຣະສາລີບຸດ ປະສົງເອົາກິເລດຢ່າງເຜັດຮ້ອນນາມັບການວ່າ ກິເລດພຽງດັ່ງເນີນ (ມ.ມູ.ອ. ໑/໕໗/໑໕໑)

ຕະກັບ[๘] ເປັນຈຳນວນຫຼາຍແດ່ ວ່າ "ໃນພົບນັ້ນ ເຮົາມີຊື່ ແບບນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແບບນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້ ເຮົາຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແບບນີ້ ເຮົາບັນລຸ ວິດຊາທີ ໑ ນີ້ໃນປະຖົມຍາມແຫ່ງຣາຕີ ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ເໝືອນບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະ ໃຈຢູ່ສັນນັ້ນ

[໔໓] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບບນີ້ ເຮົານັ້ນຈຶ່ງ ນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸຈະຣິດ ວະຈີທຸຈະຣິດ ແລະ ມະໂນທຸຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຜິດ ພວກເຂົາ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບ ກາຍສຸຈະຣິດ ວະຈີສຸຈະຣິດ ແລະມະໂນສຸຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນສຸຄະຕິ ໂລກສະຫວັນ" ເຮົາເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຄື ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມ ກຳແບບນີ້ແລ ເຮົາບັນລຸ ວິດຊາທີ ໒ ນີ້ ໃນມັຊຊິມະຍາມແຫ່ງຣາຕີ ກຳຈັດອະວິດຊາ ໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ເໝືອນບຸກຄົນ ຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ສັນນັ້ນ

[໔໘] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກ ຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບບນີ້ ເຮົານັ້ນ ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣດ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣທະຄາມິນີປະຕິປະທາ" ເມື່ອເຮົານັ້ນ ຮູ້ເຫັນແບບນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະ ອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ

---

[๘] **ສັງວັດຕະກັບ** ໝາຍເຖິງກັບຝ່າຍເສື່ອມ ຄືເວລາລະຍະເວລາທີ່ໂລກກຳລັງພິນາດ ວິວັດຕະກັບ ໝາຍເຖິງກັບຝ່າຍຈະເລີນ ຄືເວລາລະຍະເວລາທີ່ໂລກກຳລັງຟື້ນຂຶ້ນມາໃໝ່ (ວິ.ອ. ໑/໑໒/໑໔໗)

"ຊາດ ສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ[1] ເຮັດກິດທີ່ຄວນເຮັດສຳເລັດແລ້ວ[2] ບໍ່ມີກິດອື່ນເພື່ອຄວາມ ເປັນແນວນີ້ອີກຕໍ່ໄປ".[3] ເຮົາບັນລຸວິດຊາທີ ໓ ນີ້ ໃນປັດສິມມະຍາມແຫ່ງຣາຕີ ກຳຈັດອະວິດຊາ ໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ເໝືອນບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ສັນນັ້ນ

[໕໕] ພາມ ບາງເວລາທ່ານອາດມີຄວາມຄິດແນວນີ້ວ່າ "ແມ່ນມື້ນີ້ ພຣະໂຄດົມ ຍັງບໍ່ເປັນຜູ້ປາສະຈາກຣາຄະ ໂທສະ ແລະ ໂມຫະ ຍ້ອນເຫດນັ້ນ ພຣະອົງຈຶ່ງເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ" ທ່ານບໍ່ຄວນເຫັນແນວນັ້ນ ເຮົາເຫັນອຳນາດປະໂຫຍດ ໒ ປະການ ຄື (໑) ການຢູ່ເປັນສຸກໃນປັດຈຸບັນຂອງຕົນ (໒) ການອະນຸເຄາະຊຸມຊົນຜູ້ເກີດໃນພາຍຫຼັງ ຈຶ່ງເຂົ້າອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າຕຶບ"

## ຊານຸດໂສນີເປັນພຸດທະມາມະກະ

[໕໖] ຊານຸດໂສນີພາມຂາບທູນວ່າ "ທ່ານພຣະໂຄດົມໄດ້ອະນຸເຄາະຊຸມຊົນ ຜູ້ເກີດໃນພາຍຫຼັງນີ້ແລ້ວ ເໝືອນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຊົງອະນຸເຄາະສັນນັ້ນ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນ ໄພເລາະ ມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນ ໄພເລາະ ມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບເໝືອນບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ພະຍະເພຣະວະສູດທີ ໔ ຈົບ**

---

[1] **ຢູ່ຈົບພົມມະຈັນແລ້ວ** ໝາຍເຖິງກິດແຫ່ງການປະຕິບັດເພື່ອທຳລາຍອາສະວະກິເລດ ຈົບສິ້ນສົມບູນແລ້ວ ບໍ່ມີກິດ ທີ່ຈະຕ້ອງເຮັດເພື່ອຕົນເອງ ແຕ່ຍັງມີໜ້າທີ່ເພື່ອຜູ້ອື່ນຢູ່ ຜູ້ບັນລຸເຖິງຂັ້ນນີ້ໄດ້ ຊື່ວ່າ ອະເສຂະບຸກຄົນ (ມ.ມູ.ອ. ໑/໕໔/໑໓໗, ທີ.ສີ.ອ. ໑/໒໔໗/໒໐໓)

[2] **ກິດທີ່ຄວນເຮັດ** ໃນທີ່ນີ້ໝາຍເຖິງກິດໃນອະຣິຍະສັດ ໔ ຄື ການກຳນົດຮູ້ທຸກ, ການລະເຫດເກີດແຫ່ງທຸກ, ການເຮັດໃຫ້ແຈ້ງເຊິ່ງຄວາມດັບທຸກ ແລະ ການອົບຮົມມັກມີອົງ ໘ ໃຫ້ຈະເລີນ (ມ.ມູ.ອ. ໑/໕໔/໑໓໗, ທີ.ສີ.ອ. ໑/໒໔໗/໒໐໓)

[3] **ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ** ໝາຍເຖິງບໍ່ມີໜ້າທີ່ໃນການບຳເພັນມັກຍານ ເພື່ອຄວາມໝົດສິ້ນແຫ່ງກິເລດອີກຕໍ່ໄປ ຍ້ອນພຣະພຸດທະສາດສະໜາຖືວ່າ ການບັນລຸພຣະອະຣະຫັດຕະຜົນເປັນຈຸດໝາຍສູງສຸດ (ມ.ມູ.ອ. ໑/໕໔/໑໓໗, ທີ.ສີ.ອ. ໑/໒໔໗/໒໐໓)

# ໕. ອະນັງຄະນະສູດ

## ວ່າດ້ວຍບຸກຄົນຜູ້ບໍ່ມີກິເລດພຽງດັ່ງເນີນ

## ບຸກຄົນ ໔ ປະເພດ

[໕໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີທີ່ນັ້ນແລ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍດ້ວຍຄໍາວ່າ "ທ່ານຜູ້ມີອາຍຸທັງຫຼາຍ" ພິກຂຸເຫຼົ່ານັ້ນຮັບຄໍາແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ວ່າ

"ທ່ານຜູ້ມີອາຍຸທັງຫຼາຍ ບຸກຄົນ ໔ ປະເພດນີ້ ມີຜາກົດຢູ່ໃນໂລກ"
ບຸກຄົນ ໔ ປະເພດ ອັນໃດແດ່? ຄື

໑. ບຸກຄົນບາງຄົນເປັນຜູ້ມີກິເລດພຽງດັ່ງເນີນ[໑] ແຕ່ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ"ເຮົາ ມີ ກິເລດພຽງດັ່ງເນີນພາຍໃນຕົນ[໒]"

໒. ບຸກຄົນບາງຄົນເປັນຜູ້ມີກິເລດພຽງດັ່ງເນີນ ແລະ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາມີກິເລດພຽງດັ່ງເນີນພາຍໃນຕົນ"

໓. ບຸກຄົນບາງຄົນເປັນຜູ້ບໍ່ມີກິເລດພຽງດັ່ງເນີນ ແຕ່ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາບໍ່ມີກິເລດພຽງດັ່ງເນີນພາຍໃນຕົນ"

໔. ບຸກຄົນບາງຄົນເປັນຜູ້ບໍ່ມີກິເລດພຽງດັ່ງເນີນ ແລະ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາບໍ່ມີກິເລດພຽງດັ່ງເນີນພາຍໃນຕົນ"

ບັນດາບຸກຄົນ ໔ ປະເພດນັ້ນ ບຸກຄົນໃດເປັນຜູ້ມີກິເລດພຽງດັ່ງເນີນແຕ່ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາມີກິເລດພຽງດັ່ງເນີນພາຍໃນຕົນ" ບັນດາບຸກຄົນ ໒ ປະເພດ ທີ່ມີກິເລດພຽງດັ່ງເນີນຄືກັນນີ້ ບຸກຄົນນີ້ບັນດິດກ່າວວ່າ "ເປັນບຸຣຸດຕໍ່າຊາມ"

---

໑ ເບິ່ງເຊີງອັດຖະທີ່ ໕ ຂໍ້ ໕໒ (ພະຍະເພຣະອະສູດ) ໜ້າ ໔໑ ໃນເຫລັ້ມນີ້

໒ **ຕົນ** ໃນທີ່ນີ້ໝາຍເຖິງຈິດຕະສັນດານ (ມ.ມູ.ອ. ໑/໕໗/໑໕໑,໗໕/໑໙໙)

ບັນດາບຸກຄົນ ໔ ປະເພດນັ້ນ ບຸກຄົນໃດເປັນຜູ້ມີກິເລດພຽງດັ່ງເນີນແລະຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາມີກິເລດພຽງດັ່ງເນີນພາຍໃນຕົນ" ບັນດາບຸກຄົນ ໔ ປະເພດ ທີ່ມີກິເລດພຽງດັ່ງເນີນຄືກັນນີ້ ບຸກຄົນນີ້ບັນດິດກ່າວວ່າ "ເປັນບຸຣຸດປະເສີດ"

ບັນດາບຸກຄົນ ໔ ປະເພດນັ້ນ ບຸກຄົນໃດເປັນຜູ້ບໍ່ມີກິເລດພຽງດັ່ງເນີນແຕ່ບໍ່ຮູ້ແຈ້ງ ຕາມຄວາມເປັນຈິງວ່າ "ເຮົາບໍ່ມີກິເລດພຽງດັ່ງເນີນພາຍໃນຕົນ" ບັນດາບຸກຄົນ ໔ ປະເພດ ທີ່ມີກິເລດພຽງດັ່ງເນີນຄືກັນນີ້ ບຸກຄົນນີ້ບັນດິດກ່າວວ່າ "ເປັນບຸຣຸດຕ່ຳຊາມ"

ບັນດາບຸກຄົນ ໔ ປະເພດນັ້ນ ບຸກຄົນໃດເປັນຜູ້ບໍ່ມີກິເລດພຽງດັ່ງເນີນແລະຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາບໍ່ມີກິເລດພຽງດັ່ງເນີນພາຍໃນຕົນ" ບັນດາບຸກຄົນ ໔ ປະເພດ ທີ່ບໍ່ມີກິເລດພຽງດັ່ງເນີນຄືກັນນີ້ ບຸກຄົນນີ້ບັນດິດກ່າວວ່າ "ເປັນບຸຣຸດປະເສີດ"

[໕໗] ເມື່ອທ່ານພຣະສາຣີບຸດກ່າວແນວນັ້ນແລ້ວ ທ່ານພຣະມະຫາໂມກຄັນລານະໄດ້ຖາມທ່ານພຣະສາຣີບຸດແນວນີ້ວ່າ "ທ່ານສາຣີບຸດ ອັນໃດນໍ? ເປັນເຫດ ເປັນປັດໄຈທີ່ບັນດາບຸກຄົນ ໔ ປະເພດຜູ້ມີກິເລດພຽງດັ່ງເນີນຄືກັນນັ້ນ ບຸກຄົນໜຶ່ງບັນດິດ ກ່າວວ່າ "ເປັນບຸຣຸດຕ່ຳຊາມ" ແຕ່ອີກບຸກຄົນໜຶ່ງບັນດິດກ່າວວ່າ "ເປັນບຸຣຸດປະເສີດ" ແລະ ອັນໃດນໍ? ເປັນເຫດ ເປັນປັດໄຈທີ່ບັນດາບຸກຄົນ ໔ ປະເພດຜູ້ບໍ່ມີກິເລດພຽງດັ່ງເນີນຄືກັນນັ້ນ ບຸກຄົນໜຶ່ງບັນດິດກ່າວວ່າ "ເປັນບຸຣຸດຕ່ຳຊາມ" ແຕ່ອີກບຸກຄົນໜຶ່ງບັນດິດກ່າວວ່າ "ເປັນບຸຣຸດປະເສີດ"

[໕໘] ທ່ານພຣະສາຣີບຸດກ່າວວ່າ "ທ່ານຜູ້ມີອາຍຸ ບັນດາບຸກຄົນ ໔ ປະເພດນັ້ນ ບຸກຄົນຜູ້ມີກິເລດພຽງດັ່ງເນີນ ແຕ່ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາມີກິເລດພຽງດັ່ງເນີນພາຍໃນຕົນ" ເພິ່ງຫວັງຂໍ້ນີ້ໄດ້ ຄື ເຂົາຈັກບໍ່ທຳຄວາມພໍໃຈໃຫ້ເກີດຂຶ້ນ ຈັກບໍ່ພະຍາຍາມ ຈັກບໍ່ຜາຣົບຄວາມພຽນເພື່ອລະກິເລດພຽງດັ່ງເນີນນັ້ນ ເຂົາຈັກເປັນຜູ້ມີຣາຄະ ໂທສະ ໂມຫະ ມີກິເລດພຽງດັ່ງເນີນມີຈິດເສົ້າໝອງຕາຍໄປ ປຽບເໝືອນພາຊະນະສຳຣິດທີ່ເຂົານຳມາຈາກຮ້ານຕະຫລາດ ຫຼື ຈາກຕະກູນຊ່າງທອງມີຝຸ່ນ ແລະ ຂີ້ມ້ຽງຕິດແໜ້ນ ເຈົ້າຂອງຈຶ່ງຈະບໍ່ໃຊ້ສອຍ ແລະ ບໍ່ຂັດສີພາຊະນະສຳຣິດນັ້ນ ຊ້ຳຍັງເກັບມັນໄວ້ໃນບ່ອນທີ່ມີຝຸ່ນລະອອງສັບນັ້ນ ເມື່ອເປັນເຊັ່ນນັ້ນ ຕໍ່ໄປພາຊະນະສຳຣິດນັ້ນ ເພິ່ງເປັນຂອງເສົ້າໝອງຖືກຂີ້ມ້ຽງຕິດແໜ້ນຍິ່ງຂຶ້ນ"

ທ່ານພຣະມະຫາໂມກຄັນລານະຖາມວ່າ "ເປັນແນວນັ້ນບໍ? ທ່ານຜູ້ມີອາຍຸ"

ທ່ານພຣະສາຣີບຸດຕອບວ່າ "ເປັນແນວນັ້ນແລ ທ່ານຜູ້ມີອາຍຸ ບຸກຄົນຜູ້ມີກິເລດພຽງດັ່ງເນີນແຕ່ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາມີກິເລດພຽງດັ່ງເນີນພາຍໃນຕົນ" ເພິ່ງຫວັງ ຂໍ້ນີ້ໄດ້ ຄືເຂົາຈັກບໍ່ທຳຄວາມພໍໃຈໃຫ້ເກີດຂຶ້ນ ຈັກບໍ່ພະຍາຍາມ ຈັກບໍ່ຜາຣົບຄວາມພຽນ ເພື່ອລະກິເລດພຽງດັ່ງເນີນນັ້ນ ເຂົາຈັກເປັນຜູ້ມີຣາຄະ ໂທສະ ໂມຫະ ມີກິເລດພຽງດັ່ງເນີນ ມີຈິດເສົ້າໝອງຕາຍໄປ

ບັນດາບຸກຄົນ ໔ ປະເພດນັ້ນ ບຸກຄົນຜູ້ມີກິເລດພຽງດັ່ງເນີນ ແລະຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາມີກິເລດພຽງດັ່ງເນີນພາຍໃນຕົນ" ເພິ່ງຫວັງຂໍ້ນີ້ໄດ້ ຄື ເຂົາຈັກທຳຄວາມພໍໃຈໃຫ້ເກີດຂຶ້ນ ຈັກພະຍາຍາມ ຈັກຜາຮົບຄວາມພຽນ ເພື່ອລະກິເລດພຽງດັ່ງເນີນນັ້ນ ເຂົາຈັກເປັນຜູ້ບໍ່ມີຣາຄະ ໂທສະ ໂມຫະ ບໍ່ມີກິເລດພຽງດັ່ງເນີນ ມີຈິດບໍ່ເສົ້າໝອງ ຕາຍໄປ ປຽບເໝືອນພາຊະນະສຳຣິດທີ່ເຂົານຳມາຈາກຮ້ານຕະຫຼາດ ຫຼື ຈາກຕະກູນຊ່າງທອງ ມີຝຸ່ນແລະຂີ້ມ້ຽງຕິດແໜ້ນ ເຈົ້າຂອງຈະເພິ່ງໃຊ້ສອຍ ແລະ ຂັດສີພາຊະນະສຳຣິດນັ້ນ ທັງບໍ່ເກັບມັນໄວ້ໃນບ່ອນທີ່ມີຝຸ່ນລະອອງ ສັນນັ້ນ ເມື່ອເປັນແນວນັ້ນ ຕໍ່ມາພາຊະນະສຳຣິດນັ້ນ ເພິ່ງເປັນຂອງບໍລິສຸດຜ່ອງໃສ"

ທ່ານພຣະມະຫາໂມກຄັນລານະຖາມວ່າ "ເປັນແນວນັ້ນບໍ? ທ່ານຜູ້ມີອາຍຸ"

ທ່ານພຣະສາຣີບຸດຕອບວ່າ "ເປັນແນວນັ້ນນັ້ນແລ ທ່ານຜູ້ມີອາຍຸ ບຸກຄົນຜູ້ມີກິເລດພຽງດັ່ງເນີນ ແລະ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາມີກິເລດພຽງດັ່ງເນີນພາຍໃນຕົນ" ເພິ່ງຫວັງຂໍ້ນີ້ໄດ້ ຄື ເຂົາຈັກທຳຄວາມພໍໃຈໃຫ້ເກີດຂຶ້ນ ຈັກພະຍາຍາມ ຈັກຜາຮົບຄວາມພຽນເພື່ອລະກິເລດພຽງດັ່ງເນີນນັ້ນ ເຂົາຈັກເປັນຜູ້ບໍ່ມີຣາຄະ ໂທສະ ໂມຫະ ບໍ່ມີກິເລດພຽງດັ່ງເນີນ ມີຈິດບໍ່ເສົ້າໝອງຕາຍໄປ

ບັນດາບຸກຄົນ ໔ ປະເພດນັ້ນ ບຸກຄົນຜູ້ບໍ່ມີກິເລດພຽງດັ່ງເນີນ ແລະບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາບໍ່ມີກິເລດພຽງດັ່ງເນີນພາຍໃນຕົນ" ເພິ່ງຫວັງຂໍ້ນີ້ໄດ້ ຄື ເຂົາຈັກມະນະສິການສຸພະນິມິດ (ເຄື່ອງໝາຍວ່າງາມ) ຍ້ອນມະນະສິການສຸພະນິມິດນັ້ນ ຣາຄະຈັກຄອບງຳຈິດໄດ້ ເຂົາຈັກເປັນຜູ້ມີຣາຄະ ໂທສະ ໂມຫະ ມີກິເລດພຽງດັ່ງເນີນ ມີຈິດເສົ້າໝອງຕາຍໄປ ປຽບເໝືອນພາຊະນະສຳຣິດທີ່ເຂົານຳມາຈາກຮ້ານຕະຫຼາດ ຫຼື ຈາກຕະກູນຊ່າງທອງ ເປັນຂອງບໍລິສຸດຜ່ອງໃສ ແຕ່ເຈົ້າຂອງບໍ່ໄດ້ໃຊ້ສອຍ ທັງບໍ່ຂັດສີພາຊະນະສຳຣິດນັ້ນ ຊ້ຳຍັງເກັບມັນໄວ້ໃນບ່ອນທີ່ມີຝຸ່ນລະອອງ ສັນນັ້ນ ເມື່ອເປັນເຊັ່ນນັ້ນ ຕໍ່ມາພາຊະນະສຳຣິດນັ້ນ ເພິ່ງເປັນຂອງເສົ້າໝອງ ຂີ້ມ້ຽງຕິດໄດ້"

ທ່ານພຣະມະຫາໂມຄັນລານະຖາມວ່າ "ເປັນແນວນັ້ນບໍ? ທ່ານຜູ້ມີອາຍຸ"

ທ່ານພຣະສາຣີບຸດຕອບວ່າ "ເປັນແນວນັ້ນແລ ທ່ານຜູ້ມີອາຍຸ ບຸກຄົນຜູ້ບໍ່ມີກິເລດພຽງດັ່ງເນີນ ແລະ ບໍ່ຮູ້ຕາມຄວາມເປັນຈິງວ່າ "ເຮົາບໍ່ມີກິເລດພຽງດັ່ງເນີນພາຍໃນຕົນ" ເພິ່ງຫວັງຂໍ້ນີ້ໄດ້ ຄື ເຂົາຈັກມະນະສິການສຸພະນິມິດ ຍ້ອນມະນະສິການສຸພະນິມິດນັ້ນ ຣາຄະຈັກຄອບງຳຈິດໄດ້ ເຂົາຈັກເປັນຜູ້ມີຣາຄະ ໂທສະ ໂມຫະ ມີກິເລດພຽງດັ່ງເນີນ ມີຈິດເສົ້າໝອງຕາຍໄປ

ໃນບັນດາບຸກຄົນ ໔ ປະເພດນັ້ນ ບຸກຄົນຜູ້ບໍ່ມີກິເລດພຽງດັ່ງເນີນແລະຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາບໍ່ມີກິເລດພຽງດັ່ງເນີນພາຍໃນຕົນ" ເພິ່ງຫວັງຂໍ້ນີ້ໄດ້ ຄືເຂົາຈັກບໍ່ມະນະສິການສຸ

ພະນິມິດ ຍ້ອນບໍ່ມະນະສິການສຸພະນິມິດນັ້ນ ຣາຄະຈັກບໍ່ຄອບງຳຈິດ ເຂົາຈັກເປັນ ຜູ້ບໍ່ມີຣາຄະ ໂທສະ ໂມຫະ ບໍ່ມີກິເລດພຽງດັ່ງເນີນ ມີຈິດບໍ່ເສົ້າໝອງຕາຍໄປ ປຽບເໝືອນພາຊະນະສຳຣິດທີ່ເຂົານຳມາຈາກຮ້ານຕະຫຼາດ ຫຼື ຈາກຕະກູນຊ່າງທອງເປັນຂອງບໍລິສຸດຜ່ອງໃສ ເຈົ້າຂອງໃຊ້ສອຍ ແລະ ຂັດສີພາຊະນະສຳຣິດນັ້ນ ທັງບໍ່ເກັບມັນໄວ້ໃນທີ່ທີ່ມີຝຸ່ນລະອອງ ສັນນັ້ນ ເມື່ອເປັນເຊັ່ນນັ້ນ ຕໍ່ມາ ພາຊະນະສຳຣິດນັ້ນເພິ່ງເປັນຂອງບໍລິສຸດຜ່ອງໃສຍິ່ງຂຶ້ນ"

ທ່ານພຣະມະຫາໂມກຄັນລານະຖາມວ່າ "ເປັນແນວນັ້ນບໍ? ທ່ານຜູ້ມີອາຍຸ"

ທ່ານພຣະສາຣີບຸດຕອບວ່າ "ເປັນແນວນັ້ນແລ ທ່ານຜູ້ມີອາຍຸ ບຸກຄົນຜູ້ບໍ່ມີກິເລດ ພຽງດັ່ງເນີນ ແລະ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ເຮົາບໍ່ມີກິເລດພຽງດັ່ງເນີນພາຍໃນຕົນ" ເພິ່ງຫວັງຂໍ້ນີ້ໄດ້ ຄື ເຂົາຈັກບໍ່ມະນະສິການສຸພະນິມິດ ຍ້ອນບໍ່ມະນະສິການສຸພະນິມິດນັ້ນ ຣາຄະຈັກບໍ່ຄອບງຳຈິດ ເຂົາຈັກເປັນຜູ້ບໍ່ມີຣາຄະ ໂທສະ ໂມຫະ ບໍ່ມີກິເລດພຽງດັ່ງເນີນ ມີຈິດບໍ່ ເສົ້າໝອງຕາຍໄປ

ທ່ານໂມກຄັນລານະ ນີ້ແລ ເປັນເຫດ ເປັນປັດໄຈທີ່ບັນດາບຸກຄົນ ໔ ປະເພດ ຜູ້ມີກິເລດພຽງດັ່ງເນີນຄືກັນນັ້ນ ບຸກຄົນໜຶ່ງບັນດິດກ່າວວ່າ "ເປັນບຸຣຸດຕໍ່າຊາມ" ແຕ່ ອີກບຸກຄົນໜຶ່ງບັນດິດກ່າວວ່າ "ເປັນບຸຣຸດປະເສີດ" ແລະ ນີ້ແລ ເປັນເຫດ ເປັນປັດໄຈ ທີ່ບັນດາບຸກຄົນ ໔ ປະເພດຜູ້ບໍ່ມີກິເລດພຽງດັ່ງເນີນຄືກັນນີ້ ບຸກຄົນໜຶ່ງບັນດິດ ກ່າວວ່າ "ເປັນບຸຣຸດຕໍ່າຊາມ" ແຕ່ອີກບຸກຄົນໜຶ່ງບັນດິດກ່າວວ່າ "ເປັນບຸຣຸດປະເສີດ"

## ກິເລດພຽງດັ່ງເນີນ

[໖໐] ທ່ານພຣະມະຫາໂມກຄັນລານະຖາມວ່າ "ທ່ານຜູ້ມີອາຍຸ ທ່ານກ່າວວ່າ "ກິເລດພຽງດັ່ງເນີນ ກິເລດພຽງດັ່ງເນີນ" ຄຳວ່າ "ກິເລດພຽງດັ່ງເນີນ" ນັ້ນ ເປັນຊື່ຂອງອັນໃດນໍ?"

ທ່ານພຣະສາຣີບຸດຕອບວ່າ "ທ່ານຜູ້ມີອາຍຸ ຄຳວ່າ "ກິເລດພຽງດັ່ງເນີນ" ນີ້ ເປັນຊື່ຂອງອິດສາວະຈອນ[໑] ທີ່ເປັນບາບອະກຸສົນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ວ່າ "ເຮົາເປັນຜູ້ຕ້ອງອາບັດນໍ ຂໍໃຫ້ພິກຂຸທັງຫຼາຍບໍ່ເພິ່ງຮູ້ວ່າ ເຮົາຕ້ອງອາບັດແລ້ວ" ແຕ່ເປັນໄປໄດ້ທີ່ພິກຂຸທັງຫຼາຍເພິ່ງຮູ້ວ່າ ພິກຂຸນັ້ນຕ້ອງອາບັດແລ້ວ ດັ່ງນັ້ນ ພິກຂຸນັ້ນ ກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ

---

໑ **ອິດສາວະຈະຣະ** ໝາຍເຖິງການປະພຶດຕົນໃນທາງຕໍ່າຊາມຕາມອຳນາດຄວາມປາດຖະໜາ (ມ.ມູ.ອ. ໑/໖໐/໑໕໕, ມ.ມູ. ຕີກາ ໑/໖໐/໓໑໑)

"ພິກຂຸທັງຫຼາຍຮູ້ແລ້ວວ່າ ເຮົາເປັນຜູ້ຕ້ອງອາບັດແລ້ວ" ຄວາມໂກດ ແລະ ຄວາມບໍ່ຍິນດີທັງ ໒ ນີ້ ຊື່ວ່າ ກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ວ່າ "ເຮົາເປັນຜູ້ຕ້ອງອາບັດນໍ ຂໍໃຫ້ພິກຂຸທັງຫຼາຍ ເພິ່ງໂຈດເຮົາໃນບ່ອນລັບສະເພາະ ບໍ່ເພິ່ງໂຈດໃນທ່າມກາງສົງ ແຕ່ເປັນໄປໄດ້ທີ່ພິກຂຸທັງຫຼາຍນັ້ນ ເພິ່ງໂຈດພິກຂຸນັ້ນ ໃນທ່າມກາງສົງ ບໍ່ເພິ່ງໂຈດໃນບ່ອນລັບສະເພາະ ດັ່ງນັ້ນ ພິກຂຸນັ້ນ ກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸທັງຫຼາຍໂຈດເຮົາໃນທ່າມກາງສົງ ບໍ່ໂຈດໃນບ່ອນລັບສະເພາະ" ຄວາມໂກດ ແລະ ຄວາມບໍ່ຍິນດີທັງ ໒ ນີ້ ຊື່ວ່າ ກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ວ່າ "ເຮົາເປັນຜູ້ຕ້ອງອາບັດນໍ ຂໍໃຫ້ພິກຂຸຜູ້ສະເໝີກັນ[໒] ເພິ່ງໂຈດເຮົາ ພິກຂຸຜູ້ບໍ່ສະເໝີກັນບໍ່ເພິ່ງໂຈດເຮົາ" ແຕ່ເປັນໄປໄດ້ທີ່ພິກຂຸຜູ້ບໍ່ສະເໝີກັນເພິ່ງໂຈດພິກຂຸນັ້ນ ພິກຂຸຜູ້ສະເໝີກັນບໍ່ໂຈດພິກຂຸນັ້ນ ດັ່ງນັ້ນ ພິກຂຸນັ້ນກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸຜູ້ບໍ່ສະເໝີກັນໂຈດເຮົາ ແຕ່ພິກຂຸຜູ້ສະເໝີກັນບໍ່ໂຈດເຮົາ" ຄວາມໂກດແລະຄວາມບໍ່ຍິນດີທັງ ໒ ນີ້ ຊື່ວ່າກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ ວ່າ

"ໂອນໍ ຂໍພຣະສາດສະດາຊົງຊັກຖາມສະເພາະເຮົາຢູ່ປະຈຳ ໆ ແລ້ວຊົງສະແດງທຳແກ່ພິກຂຸທັງຫຼາຍ ບໍ່ຊົງຊັກຖາມພິກຂຸອື່ນ ແລ້ວຊົງສະແດງທຳແກ່ພິກຂຸທັງຫຼາຍ" ແຕ່ເປັນໄປໄດ້ທີ່ພຣະສາດສະດາ ເພິ່ງຊົງຊັກຖາມພິກຂຸອື່ນຢູ່ປະຈຳແລ້ວຊົງສະແດງທຳແກ່ພິກຂຸທັງຫຼາຍ ບໍ່ຊົງຊັກຖາມພິກຂຸນັ້ນຢູ່ປະຈຳແລ້ວຊົງສະແດງທຳແກ່ພິກຂຸທັງຫຼາຍ ດັ່ງນັ້ນ ພິກຂຸນັ້ນກໍຈະໂກດບໍ່ຍິນດີ ຍ້ອນຄິດວ່າ "ພຣະສາດສະດາຊົງຊັກຖາມພິກຂຸອື່ນຢູ່ປະຈຳແລ້ວ ຊົງສະແດງທຳແກ່ພິກຂຸທັງຫຼາຍ ບໍ່ຊົງຊັກຖາມເຮົາຢູ່ປະຈຳແລ້ວຊົງສະແດງທຳແກ່ພິກຂຸທັງຫຼາຍ" ຄວາມໂກດແລະຄວາມບໍ່ຍິນດີທັງ ໒ ນີ້ ຊື່ວ່າກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ ວ່າ

"ໂອນໍ ຂໍໃຫ້ພິກຂຸທັງຫຼາຍຮ້ອມລ້ອມເຮົາທໍ່ນັ້ນ ຍ່າງໜາແໜ້ນເຂົ້າເຮືອນເພື່ອພັດຕາຫານບໍ່ຮ້ອມລ້ອມພິກຂຸອື່ນໜາແໜ້ນເຂົ້າເຮືອນເພື່ອພັດຕາຫານ" ແຕ່ເປັນໄປໄດ້ທີ່ພິກຂຸທັງຫຼາຍເພິ່ງຮ້ອມລ້ອມພິກຂຸອື່ນຍ່າງໜາແໜ້ນເຂົ້າເຮືອນເພື່ອພັດຕາຫານ ບໍ່ຮ້ອມລ້ອມພິກຂຸນັ້ນຍ່າງໜາແໜ້ນເຂົ້າເຮືອນເພື່ອພັດຕາຫານ ດັ່ງນັ້ນ ພິກຂຸນັ້ນກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸທັງ

---

໒ **ພິກຂຸຜູ້ສະເໝີກັນ** ໝາຍເຖິງພິກຂຸຜູ້ຕ້ອງອາບັດໂຈດພິກຂຸຜູ້ຕ້ອງອາບັດຂໍ້ດຽວກັນ (ມ.ມູ.ອ. ໑/໖໐/໑໕໖)

ຫຼາຍຮ້ອມລ້ອມພິກຂຸອື່ນຢ່າງໜາແໜ້ນແລ້ວເຂົ້າເຮືອນເພື່ອພັດຕາຫານ ບໍ່ຮ້ອມລ້ອມເຮົາຢ່າງໜາແໜ້ນເຂົ້າເຮືອນເພື່ອພັດຕາຫານທໍ່ນັ້ນ" ຄວາມໂກດ ແລະ ຄວາມບໍ່ຍິນດີທັງ ໒ ນີ້ ຊື່ວ່າ ກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ ວ່າ

"ໂອນໍ ຂໍໃຫ້ເຮົາທໍ່ນັ້ນເພິ່ງໄດ້ອາສະນະທີ່ດີເລີດ[໑] ນ້ຳທີ່ດີເລີດ[໒] ບິນທະບາດທີ່ດີເລີດ[໓] ໃນໂຮງສັນ ພິກຂຸອື່ນບໍ່ເພິ່ງໄດ້ອາສະນະທີ່ດີເລີດ ນ້ຳທີ່ດີເລີດ ບິນທະບາດທີ່ດີເລີດໃນໂຮງສັນ" ແຕ່ເປັນໄປໄດ້ທີ່ພິກຂຸອື່ນເພິ່ງໄດ້ອາສະນະທີ່ດີເລີດ ນ້ຳທີ່ດີເລີດ ບິນທະບາດທີ່ດີເລີດໃນໂຮງສັນ ພິກຂຸນັ້ນ ເມື່ອບໍ່ໄດ້ອາສະນະທີ່ດີເລີດ ນ້ຳທີ່ດີເລີດ ບິນທະບາດທີ່ດີເລີດໃນໂຮງສັນ ດັ່ງນັ້ນ ພິກຂຸນັ້ນ ກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸອື່ນໄດ້ອາສະນະທີ່ດີເລີດ ນ້ຳທີ່ດີເລີດ ບິນທະບາດທີ່ດີເລີດໃນໂຮງສັນ ເຮົາບໍ່ໄດ້ອາສະນະທີ່ດີເລີດ ນ້ຳທີ່ດີເລີດ ບິນທະບາດທີ່ດີເລີດໃນໂຮງສັນ" ຄວາມໂກດ ແລະ ຄວາມບໍ່ຍິນດີທັງ ໒ ນີ້ ຊື່ວ່າກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ ວ່າ

"ໂອນໍ ຂໍເຮົາທໍ່ນັ້ນສັນໃນໂຮງສັນສຳເລັດແລ້ວເພິ່ງໄດ້ອະນຸໂມທະນາ ພິກຂຸອື່ນສັນໃນໂຮງສັນສຳເລັດແລ້ວບໍ່ເພິ່ງໄດ້ອະນຸໂມທະນາ" ແຕ່ເປັນໄປໄດ້ທີ່ພິກຂຸອື່ນສັນໃນໂຮງສັນສຳເລັດແລ້ວເພິ່ງໄດ້ອະນຸໂມທະນາ ພິກຂຸນັ້ນສັນໃນໂຮງສັນສຳເລັດແລ້ວບໍ່ເພິ່ງໄດ້ອະນຸໂມທະນາ ດັ່ງນັ້ນ ພິກຂຸນັ້ນກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸອື່ນສັນໃນໂຮງສັນສຳເລັດແລ້ວອະນຸໂມທະນາ ເຮົາສັນໃນໂຮງສັນສຳເລັດແລ້ວບໍ່ໄດ້ອະນຸໂມທະນາ" ຄວາມໂກດແລະຄວາມບໍ່ຍິນດີທັງ ໒ ນີ້ ຊື່ວ່າກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ ວ່າ

"ໂອນໍ ຂໍໃຫ້ເຮົາທໍ່ນັ້ນ ເພິ່ງໄດ້ສະແດງທຳແກ່ພິກຂຸທັງຫຼາຍຜູ້ຢູ່ໃນອາຮາມ ພິກຂຸອື່ນບໍ່ເພິ່ງໄດ້ສະແດງທຳແກ່ພິກຂຸທັງຫຼາຍຜູ້ຢູ່ໃນອາຮາມ" ແຕ່ເປັນໄປໄດ້ທີ່ພິກຂຸອື່ນເພິ່ງໄດ້ສະແດງທຳແກ່ພິກຂຸທັງຫຼາຍຜູ້ຢູ່ໃນອາຮາມ ພິກຂຸນັ້ນ ເມື່ອບໍ່ໄດ້ສະແດງທຳແກ່ພິກຂຸທັງຫຼາຍຜູ້ຢູ່ໃນອາຮາມ ດັ່ງນັ້ນ ພິກຂຸນັ້ນກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸອື່ນໄດ້ສະແດງທຳແກ່ພິກຂຸທັງຫຼາຍຜູ້ຢູ່ໃນອາຮາມ ເຮົາບໍ່ໄດ້ສະແດງທຳແກ່ພິກຂຸທັງຫຼາຍຜູ້ຢູ່ໃນອາຮາມ" ຄວາມໂກດແລະຄວາມບໍ່ຍິນດີທັງ ໒ ນີ້ ຊື່ວ່າ ກິເລດພຽງດັ່ງເນີນ

---

໑ **ອາສະນະທີ່ດີເລີດ** ໝາຍເຖິງທີ່ນັ່ງຫົວແຖວ (ມ.ມູ.ອ. ໑/໖໐/໑໔໗)

໒ **ນ້ຳທີ່ດີເລີດ** ໝາຍເຖິງນ້ຳທັກສິນາ (ມ.ມູ.ອ. ໑/໖໐/໑໔໗)

໓ **ບິນທະບາດທີ່ດີເລີດ** ໝາຍເຖິງບິນທະບາດທີ່ຖວາຍແກ່ພຣະເຖຣະຜູ້ເປັນປະທານໃນສົງ (ມ.ມູ.ອ. ໑/໖໐/໑໔໗)

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ ວ່າ

"ໂອນໍ ຂໍໃຫ້ເຮົາທໍ່ນັ້ນ ເພິ່ງໄດ້ສະແດງທຳແກ່ພິກຂຸນີທັງຫຼາຍຜູ້ຢູ່ໃນອາຣາມ ຯລຯ ເພິ່ງໄດ້ສະແດງທຳແກ່ອຸປາສົກທັງຫຼາຍ ຯລຯ ເພິ່ງໄດ້ສະແດງທຳແກ່ອຸປາສິກາທັງຫຼາຍ ພິກຂຸອື່ນບໍ່ເພິ່ງໄດ້ສະແດງທຳແກ່ອຸປາສິກາທັງຫຼາຍຜູ້ຢູ່ໃນອາຣາມ" ແຕ່ເປັນໄປໄດ້ທີ່ພິກຂຸອື່ນເພິ່ງໄດ້ສະແດງທຳແກ່ອຸປາສິກາທັງຫຼາຍຜູ້ຢູ່ໃນອາຣາມ ພິກຂຸນັ້ນ ເມື່ອບໍ່ໄດ້ສະແດງທຳແກ່ອຸປາສິກາທັງຫຼາຍຜູ້ຢູ່ໃນອາຣາມ ດັ່ງນັ້ນ ພິກຂຸນັ້ນກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸອື່ນໄດ້ສະແດງທຳແກ່ອຸປາສິກາທັງຫຼາຍຜູ້ຢູ່ໃນອາຣາມ ເຮົາບໍ່ໄດ້ສະແດງທຳແກ່ອຸປາສິກາທັງຫຼາຍ ຜູ້ຢູ່ໃນອາຣາມ" ຄວາມໂກດແລະຄວາມບໍ່ຍິນດີທັງ ໔ ນີ້ ຊື່ວ່າ ກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ວ່າ

"ໂອນໍ ຂໍພິກຂຸທັງຫຼາຍ ເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາທໍ່ນັ້ນ ບໍ່ເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸອື່ນ" ແຕ່ເປັນໄປໄດ້ທີ່ພິກຂຸທັງຫຼາຍ ເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ພິກຂຸອື່ນ ບໍ່ເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸນັ້ນ ດັ່ງນັ້ນ ພິກຂຸນັ້ນກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸທັງຫຼາຍສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸອື່ນ ບໍ່ສັກກາຣະ ເຄົາລົບ ນັບຖື ບູຊາເຮົາ" ຄວາມໂກດແລະຄວາມບໍ່ຍິນດີທັງ ໔ ນີ້ ຊື່ວ່າ ກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ ວ່າ

"ໂອນໍ ຂໍພິກຂຸນີທັງຫຼາຍເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາທໍ່ນັ້ນ ຯລຯ ອຸປາສົກທັງຫຼາຍ ຯລຯ ອຸປາສິກາທັງຫຼາຍເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາທໍ່ນັ້ນ ບໍ່ເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸອື່ນ" ແຕ່ເປັນໄປໄດ້ທີ່ອຸປາສິກາທັງຫຼາຍ ເພິ່ງສັກກາຣະເຄົາລົບ ນັບຖື ບູຊາພິກຂຸອື່ນ ບໍ່ສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸນັ້ນ ດັ່ງນັ້ນ ພິກຂຸນັ້ນ ກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ອຸປາສິກາທັງຫຼາຍສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸອື່ນ ບໍ່ສັກກາຣະ ເຄົາລົບ ນັບຖື ບູຊາເຮົາ" ຄວາມໂກດແລະຄວາມບໍ່ຍິນດີ ທັງ ໔ ນີ້ ຊື່ວ່າກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ ວ່າ

"ໂອນໍ ຂໍເຮົາໃຫ້ທໍ່ນັ້ນ ເພິ່ງໄດ້ຈີວອນອັນປະນີດ ພິກຂຸອື່ນບໍ່ເພິ່ງໄດ້ຈີວອນອັນປະນີດ" ແຕ່ເປັນໄປໄດ້ທີ່ພິກຂຸອື່ນເພິ່ງໄດ້ຈີວອນອັນປະນີດ ພິກຂຸນັ້ນ ເມື່ອບໍ່ໄດ້ຈີວອນອັນປະນີດ ດັ່ງນັ້ນ ພິກຂຸນັ້ນກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸອື່ນໄດ້ຈີວອນອັນປະນີດ ເຮົາບໍ່ໄດ້ຈີວອນອັນປະນີດ" ຄວາມໂກດ ແລະຄວາມບໍ່ຍິນດີທັງ ໔ ນີ້ ຊື່ວ່າກິເລດພຽງດັ່ງເນີນ

ເປັນໄປໄດ້ທີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເພິ່ງມີຄວາມປາຖະໜາແນວນີ້ ວ່າ

"ໂອນໍ ຂໍໃຫ້ເຮົາທໍ່ນັ້ນ ເພິ່ງໄດ້ບິນທະບາດອັນປະນີດ ໆລໆ ເສນາສະນະອັນປະນີດ ໆລໆ ຄິລານະປັດໄຈເພສັດບໍຣິຂານອັນປະນີດ ພິກຂຸອື່ນບໍ່ເພິ່ງໄດ້ຄິລານະປັດໄຈເພສັດບໍຣິຂານອັນປະນີດ" ແຕ່ເປັນໄປໄດ້ທີ່ພິກຂຸອື່ນເພິ່ງໄດ້ຄິລານະປັດໄຈເພສັດບໍຣິຂານອັນປະນີດ ພິກຂຸນັ້ນເມື່ອບໍ່ໄດ້ຄິລານະປັດໄຈເພສັດບໍຣິຂານອັນປະນີດ ດັ່ງນັ້ນ ພິກຂຸນັ້ນກໍຈະໂກດ ບໍ່ຍິນດີ ຍ້ອນຄິດວ່າ "ພິກຂຸອື່ນໄດ້ຄິລານະປັດໄຈເພສັດບໍຣິຂານອັນປະນີດ ເຮົາບໍ່ໄດ້ຄິລານະປັດໄຈເພສັດບໍຣິຂານອັນປະນີດ" ຄວາມໂກດແລະຄວາມບໍ່ຍິນດີທັງ ໔ ນີ້ ຊື່ວ່າ ກິເລດພຽງດັ່ງເນີນ

ທ່ານຜູ້ມີອາຍຸ ຄຳວ່າ "ກິເລດພຽງດັ່ງເນີນ" ນີ້ ເປັນຊື່ແຫ່ງອິດສາວະຈອນທັງຫຼາຍທີ່ເປັນບາບອະກຸສົນ

## ອິດສາວະຈອນທີ່ເປັນບາບອະກຸສົນ

[໗໑] ທ່ານຜູ້ມີອາຍຸ ອິດສາວະຈອນທີ່ເປັນບາບອະກຸສົນເຫຼົ່ານີ້ທີ່ພິກຂຸອົງໃດອົງໜຶ່ງຍັງລະບໍ່ໄດ້ ຍັງຜາກົດແລະເລົ່າຂານກັນຢູ່ ເຖິງວ່າພິກຂຸນັ້ນຈະເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ມີເສນາສະນະອັນສະຫງັດ ຖືບິນທະບາດເປັນຂໍ້ວັດປະຕິບັດ ທ່ຽວບິນທະບາດໄປຕາມລຳດັບຮ່ອມ ນຸ່ງຫົ່ມຜ້າບັງສຸກຸນ ເປັນຂໍ້ວັດປະຕິບັດ ຄອງຈີວອນເສົ້າໝອງກໍຕາມ ເພື່ອນພົມມະຈາຣີທັງຫຼາຍກໍບໍ່ສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸນັ້ນເລີຍ ຂໍ້ນັ້ນຍ້ອນເຫດໃດ? ຍ້ອນອິດສາວະຈອນທີ່ເປັນບາບອະກຸສົນເຫຼົ່ານັ້ນ ທີ່ພິກຂຸນັ້ນຍັງລະບໍ່ໄດ້ ຍັງຜາກົດແລະເລົ່າຂານກັນຢູ່ ພາຊະນະສຳຣິດທີ່ເຂົານຳມາ ຈາກຮ້ານຕະຫຼາດຫຼືຈາກຕະກູນຊ່າງທອງ ເປັນຂອງບໍລິສຸດຜ່ອງໃສ ພວກເຈົ້າຂອງເພິ່ງໃສ່ຊາກງູ ຊາກໝາ ຫຼື ຊາກສົບມະນຸດຈົນເຕັມພາຊະນະສຳຣິດນັ້ນ ອັດດ້ວຍພາຊະນະສຳຣິດໃບອື່ນແລ້ວ ນຳໄປສູ່ຮ້ານຕະຫຼາດ ຄົນເຫັນພາຊະນະສຳຣິດນັ້ນແລ້ວເພິ່ງກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ສິ່ງທີ່ທ່ານນຳໄປນີ້ຄືອັນໃດ ເບິ່ງຄືວ່າຈະເປັນຂອງທີ່ໜ້າພໍໃຈຢ່າງຍິ່ງ" ເຂົາລຸກຂຶ້ນໄຂພາຊະນະ ສຳຣິດນັ້ນເບິ່ງ ຄວາມບໍ່ພໍໃຈ ຄວາມເປັນຂອງປະຕິກູນ ແລະຄວາມເປັນຂອງໜ້າລັງກຽດຈຶ່ງເກີດຂຶ້ນ ພ້ອມກັບການເຫັນຊາກງູເປັນຕົ້ນນັ້ນ ແມ່ນຄົນທີ່ຫິວກໍບໍ່ຕ້ອງການຈະບໍຣິໂພກ ບໍ່ຕ້ອງກ່າວ ເຖິງຄົນທີ່ບໍຣິໂພກອີ່ມແລ້ວ ແມ່ນສັນໃດ ອິດສາວະຈອນທີ່ເປັນບາບອະກຸສົນເຫຼົ່ານີ້ກໍສັນນັ້ນຄືກັນ ທີ່ພິກຂຸອົງໃດອົງໜຶ່ງຍັງລະບໍ່ໄດ້ ຍັງຜາກົດແລະເລົ່າຂານກັນຢູ່ ແມ່ນພິກຂຸນັ້ນ ຈະເປັນຜູ້ຢູ່ປ່າ ເປັນຂໍ້ວັດປະຕິບັດ ມີເສນາສະນະອັນສະຫງັດ ຖືບິນທະບາດເປັນຂໍ້ວັດປະຕິບັດ ທ່ຽວບິນທະບາດໄປຕາມລຳດັບຮ່ອມ ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຄອງຈີວອນເສົ້າໝອງກໍຕາມ ເພື່ອນພົມມະຈາຣີທັງຫຼາຍກໍບໍ່ສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸອົງນັ້ນ ຂໍ້ນັ້ນຍ້ອນເຫດໃດ? ຍ້ອນອິດສາວະຈອນທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ພິກຂຸອົງນັ້ນຍັງລະບໍ່ໄດ້ ຍັງຜາກົດແລະເລົ່າຂານກັນຢູ່

[໖໔] ອິດສາວະຈອນທີ່ເປັນບາບອະກຸສົນເຫຼົ່ານີ້ ທີ່ພິກຂຸອົງໃດອົງໜຶ່ງລະໄດ້ແລ້ວ ຍັງຜາກົດແລະເລົ່າຂານກັນຢູ່ ແມ່ນທ່ານຈະຢູ່ໃນເສນາສະນະໃກ້ເຮືອນ ຮັບນິມົນ ຄອງຈີວອນ ຂອງຄະຫະບໍດີກໍຕາມ ເພື່ອນພົມມະຈາຣີທັງຫຼາຍກໍສັກກາຣະ ເຄົາລົບ ນັບຖື ບູຊາທ່ານ ຂໍ້ນັ້ນ ຍ້ອນເຫດໃດ? ຍ້ອນອິດສາວະຈອນທີ່ເປັນບາບອະກຸສົນເຫຼົ່ານັ້ນ ພິກຂຸອົງນັ້ນລະໄດ້ແລ້ວ ຍັງຜາກົດ ແລະເລົ່າຂານກັນຢູ່ ພາຊະນະສຳຣິດທີ່ເຂົານຳມາຈາກຮ້ານຕະຫຼາດ ຫຼື ຈາກຕະກູນຊ່າງທອງ ເປັນຂອງບໍລິສຸດຜ່ອງໃສ ເຈົ້າຂອງໃສ່ເຂົ້າສຸກແຫ່ງເຂົ້າສາລີທັງຫຼາຍ ທີ່ເລືອກຂອງສີກກະປົກອອກແລ້ວໃສ່ແກງ ແລະ ກັບເຂົ້າຫຼາຍແນວຈົນເຕັມພາຊະນະສຳຣິດນັ້ນ ອັດດ້ວຍພາຊະນະສຳຣິດໃບອື່ນແລ້ວນຳໄປສູ່ຮ້ານຕະຫຼາດ ຄົນເຫັນພາຊະນະສຳຣິດນັ້ນແລ້ວເພິ່ງເວົ້າແນວນີ້ວ່າ "ທ່ານຜູ້ຈະເລີນ ສິ່ງທີ່ທ່ານນຳໄປນີ້ຄືອັນໃດ? ເບິ່ງຄືວ່າຈະເປັນຂອງທີ່ໜ້າພໍໃຈຢ່າງຍິ່ງ" ເຂົາລຸກຂຶ້ນໄຂພາຊະນະສຳຣິດນັ້ນເບິ່ງ ຄວາມພໍໃຈ ຄວາມເປັນຂອງບໍ່ໜ້າປະຕິກູນແລະຄວາມເປັນຂອງບໍ່ໜ້າລັງກຽດ ຈຶ່ງເກີດຂຶ້ນພ້ອມກັບການເຫັນເຂົ້າສຸກແຫ່ງເຂົ້າສາລີນັ້ນ ແມ່ນຄົນທີ່ບໍຣິໂພກອີ່ມແລ້ວກໍຕ້ອງການບໍຣິໂພກ ບໍ່ຕ້ອງກ່າວເຖິງຄົນທີ່ຫິວເລີຍ ແມ່ນສັນໃດ ອິດສາວະຈອນທີ່ເປັນບາບອະກຸສົນ ເຫຼົ່ານີ້ກໍສັນນັ້ນຄືກັນ ທີ່ພິກຂຸອົງໃດອົງໜຶ່ງລະໄດ້ແລ້ວ ຍັງຜາກົດແລະເລົ່າຂານກັນຢູ່ ແມ່ນທ່ານຈະຢູ່ໃນເສນາສະນະໃກ້ເຮືອນ ຮັບນິມົນ ຄອງຈີວອນຂອງຄະຫະບໍດີກໍຕາມ ເພື່ອນພົມມະຈາຣີທັງຫຼາຍກໍສັກກາຣະ ເຄົາລົບ ນັບຖື ບູຊາທ່ານ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນອິດສາວະຈອນ ທີ່ເປັນບາບອະກຸສົນເຫຼົ່ານັ້ນ ທີ່ພິກຂຸອົງນັ້ນລະໄດ້ແລ້ວ ຍັງຜາກົດ ແລະເລົ່າຂານກັນຢູ່"

## ອຸປະມາດ້ວຍບຸດຊ່າງເຮັດລົດ

[໖໕] ເມື່ອທ່ານພຣະສາຣີບຸດກ່າວແນວນີ້ແລ້ວ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ່ານພຣະສາຣີບຸດວ່າ "ທ່ານສາຣີບຸດ ອຸປະມາຜາກົດຂຶ້ນແກ່ຂ້າພະເຈົ້າແລ້ວ"

ທ່ານພຣະສາຣີບຸດ ຈຶ່ງກ່າວວ່າ "ທ່ານມະຫາໂມກຄັນລານະ ຂໍໃຫ້ອຸປະມາຜາກົດຂຶ້ນແກ່ທ່ານ ທ່ານຈົ່ງກ່າວອຸປະມານັ້ນເທີ້ນ[໑]"

ທ່ານພຣະມະຫາໂມກຄັນລານະຈຶ່ງກ່າວວ່າ "ທ່ານຜູ້ມີອາຍຸ ສະໄໝໜຶ່ງຂ້າພະເຈົ້າຢູ່ໃນເຂດນະຄອນຣາສັນຄື ເຊິ່ງມີພູເຂົາລ້ອມເໝືອນຄອກງົວ ເມື່ອໃນເວລາເຊົ້າ ຂ້າພະເຈົ້າຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປບິນທະບາດໃນເມືອຣາດຊະຄື ສະໄໝນັ້ນ ບຸດຊ່າງເຮັດລົດຊື່ ສະມີຕິ ຖາກກົງລໍ້ລົດຢູ່ ອາຊີວົກຜູ້ເປັນບຸດຂອງນາຍປັນດຸ ເຊິ່ງເປັນຊ່າງເຮັດລົດຄົນເກົ່າຢືນຢູ່ໃກ້ນາຍສະມີຕິ ຄັ້ງນັ້ນ ອາຊີວົກນັ້ນໄດ້ເກີດຄວາມຄິດຂຶ້ນໃນໃຈແນວນີ້ວ່າ "ໂອນໍ ຂໍໃຫ້

---

໑ ເບິ່ງທຽບ ອັງ.ປັນຈະກະ. (ແປ) ໔໔/໑໖໗/໔໓໔

ບຸດຂອງຊ່າງເຮັດລົດຊື່ ສະມີຕິ ຜູ້ນີ້ເພິ່ງຖາກສ່ວນໂຄ້ງ ສ່ວນຄົດ ແລະ ມອກແຫ່ງກົງລໍ້ນີ້ອອກ ເມື່ອເປັນແນວນີ້ ກົງລໍ້ນີ້ກໍຈະໝົດໂຄ້ງ ໝົດຄົດ ໝົດມອກ ມີແຕ່ແກ່ນລ້ວນ ໆ" ບຸດ ຂອງຊ່າງ ເຮັດລົດຊື່ສະມີຕິກໍຖາກສ່ວນໂຄ້ງ ສ່ວນຄົດ ແລະ ມອກແຫ່ງກົງລໍ້ນັ້ນໄດ້ເໝືອນທີ່ອາຊີວົກນັ້ນ ມີຄວາມຄິດຂຶ້ນໃນໃຈ ດັ່ງນັ້ນ ອາຊີວົກນັ້ນ ໄດ້ເປ່ງວາຈາສະແດງຄວາມດີໃຈວ່າ "ນາຍສະມີຕິ ຖາກເໝືອນຮູ້ໃຈເຮົາ"

ເປັນແນວນັ້ນນັ້ນແລ ທ່ານຜູ້ມີອາຍຸ ບຸກຄົນເຫຼົ່າໃດ ບໍ່ມີສັດທາຕ້ອງການທີ່ຈະມີຊີວິດຢູ່ (ໃນໂລກນີ້) ອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນດ້ວຍສັດທາ ເປັນຄົນໂອ້ອວດ ມີມານຍາ ຫຼອກລວງ ຟຸ້ງຊ່ານ ຖືຕົນ ກັບກອກ ປາກກ້າ ບໍ່ສັງລວມວາຈາ ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ[໘] ບໍ່ຮູ້ປະມານໃນການບໍລິໂພກ ບໍ່ປະກອບຄວາມພຽນໃນທໍາເປັນເຄື່ອງຕື່ນຢ່າງຕໍ່ເນື່ອງ ບໍ່ໃສ່ໃຈສະມະນະທໍາ ບໍ່ມີຄວາມເຄົາລົບຢ່າງໜັກແໜ້ນໃນສິກຂາ ເປັນຜູ້ມັກຫຼາຍ ເປັນຜູ້ຍໍ້ຍ່ອນ ເປັນຜູ້ນໍາໃນໂອກກະມະນະທໍາ ຖືເບົາໃນປະວິເວກ ຂີ້ຄ້ານ ມີຄວາມພຽນຍໍ້ຍ່ອນ ຂາດສະຕິສໍາປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດ ໝຸນໄປຜິດ ເປັນຄົນໂງ່ຈ້າ ເບົາປັນຍາ ທ່ານສາຣີບຸດຖາກ (ກິເລດ) ດ້ວຍທໍາບັນລະຍາຍນີ້ເໝືອນຮູ້ໃຈຂອງບຸກຄົນເຫຼົ່ານັ້ນ

ອັນໜຶ່ງ ກຸນລະບຸດເຫຼົ່າໃດມີສັດທາອອກຈາກເຮືອນບວດເປັນບັນພະຊິດ ບໍ່ໂອ້ອວດ ບໍ່ມີມານຍາ ບໍ່ຫຼອກລວງ ບໍ່ຟຸ້ງຊ່ານ ບໍ່ຖືຕົນ ບໍ່ກັບກອກ ບໍ່ປາກກ້າ ສັງລວມວາຈາ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຮູ້ປະມານໃນການບໍລິໂພກ ປະກອບຄວາມພຽນໃນທໍາເປັນເຄື່ອງຕື່ນຢ່າງຕໍ່ເນື່ອງ ໃສ່ໃຈໃນສະມະນະທໍາ ມີຄວາມເຄົາລົບຢ່າງໜັກແໜ້ນໃນສິກຂາ ບໍ່ເປັນຜູ້ມັກຫຼາຍ ບໍ່ເປັນຜູ້ຍໍ້ຍ່ອນ ບໍ່ເປັນຜູ້ນໍາໃນໂອກກະມະນະທໍາ ບໍ່ຖືເບົາໃນປະວິເວກ ຜາຣົບຄວາມພຽນ ອຸທິດກາຍແລະໃຈ ມີສະຕິຕັ້ງໝັ້ນ ມີສໍາປະຊັນຍະ ມີຈິດໝັ້ນຄົງ ມີຈິດແນ່ວແນ່ ບໍ່ເປັນຄົນໂງ່ຈ້າເບົາປັນຍາ ກຸນລະບຸດເຫຼົ່ານັ້ນຟັງທໍາບັນລະຍາຍນີ້ຂອງທ່ານພຣະສາຣີບຸດ ຄືກັບວ່າຈະດື່ມຈະກືນໄວ້ດ້ວຍວາຈາແລະໃຈວ່າ

"ດີແທ້ນໍ ທ່ານຜູ້ຈະເລີນ ທ່ານພຣະສາຣີບຸດຜູ້ເປັນເພື່ອນພົມມະຈາຣີ ເຮັດໃຫ້ເຮົາທັງຫຼາຍ ອອກຈາກອະກຸສົນທໍາແລ້ວໃຫ້ດໍາລົງຢູ່ໃນກຸສົນທໍາ ປຽບເໝືອນ ສະຕີສາວ ຫຼື ບຸຣຸດໜຸ່ມມັກແຕ່ງໂຕ ຊໍາຣະສະຫົວແລ້ວໄດ້ດອກບົວ ດອກມະລິ ຫຼື ດອກລໍາດວນ ຖືໄວ້ດ້ວຍມື ທັງ ໒ ແລ້ວຍົກຂຶ້ນວາງໄວ້ເທິງຫົວ ແມ່ນສັນໃດ ກຸນລະບຸດເຫຼົ່ານັ້ນກໍສັນນັ້ນຄືກັນ ມີສັດທາ ອອກຈາກເຮືອນບວດເປັນບັນພະຊິດ ບໍ່ໂອ້ອວດ ບໍ່ມີມານຍາ ບໍ່ຫຼອກລວງ ບໍ່ຟຸ້ງຊ່ານ ບໍ່ຖືຕົນ ບໍ່ກັບກອກ ບໍ່ປາກກ້າ ສັງລວມວາຈາ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຮູ້ປະມານໃນການບໍລິໂພກ

໘ **ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ** ໝາຍເຖິງບໍ່ສໍາລວມກໍາທະວານ (ຄື ກາຍ ວາຈາ ໃຈ) ໃນອິນຊີ ໖ ຄື ຕາ ຫູ ດັງ ລີ້ນ ກາຍ ແລະໃຈ (ມ.ມູ.ອ. ໑/໖໓/໑໖໘) ແລະເບິ່ງທຽບ ອັງ.ປັນຈະກະ. (ແປ) ໒໘/໑໖໗/໔໗໑

ປະກອບຄວາມພຽນໃນທຳເປັນເຄື່ອງຕື່ນ ຢ່າງຕໍ່ເນື່ອງ ໃສ່ໃຈໃນສະມະນະທຳ ມີຄວາມເຄົາລົບຢ່າງໜັກແໜ້ນໃນສິກຂາ ບໍ່ເປັນຜູ້ມັກຫຼາຍ ບໍ່ເປັນຜູ້ຍໍ້ຍ່ອນ ບໍ່ເປັນຜູ້ນຳໃນໂອກກະມະນະທຳ ບໍ່ຖືເບົາໃນປະວິເວກ ຜາຣົບຄວາມພຽນ ອຸທິດກາຍແລະໃຈ ມີສະຕິຕັ້ງໝັ້ນ ມີສຳປະຊັນຍະ ມີຈິດໝັ້ນຄົງ ມີຈິດແນ່ວແນ່ ບໍ່ເປັນຄົນໂງ່ຈ້າ ເບົາປັນຍາ ໄດ້ຟັງທຳບັນລະຍາຍນີ້ຂອງທ່ານພຣະສາຣີບຸດແລ້ວ ຄືກັບວ່າ ຈະດື່ມຈະກືນໄວ້ດ້ວຍວາຈາແລະໃຈວ່າ "ດີແທ້ນໍ ທ່ານຜູ້ຈະເລີນ ທ່ານພຣະສາຣີບຸດຜູ້ເປັນເພື່ອນພົມມະຈາຣີ ເຮັດໃຫ້ເຮົາທັງຫຼາຍອອກຈາກອະກຸສົນທຳແລ້ວ ໃຫ້ດຳລົງຢູ່ໃນກຸສົນທຳ"

ພຣະອັກຄະຣະສາວົກທັງ ໒ ນັ້ນຕ່າງຊື່ນຊົມພາສິດຂອງກັນແລະກັນ ດັ່ງນີ້ແລ

**ອະນັງຄະນະສູດທີ ໕ ຈົບ**

## ໖. ອາກັງເຂີຍຍະສູດ[1]

### ວ່າດ້ວຍຄວາມຫວັງ ໑໗ ປະການ

[໖໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມີສີນສົມບູນ ມີປາຕິໂມກສົມບູນຢູ່
ຈົ່ງສັງລວມດ້ວຍການສັງວອນໃນປາຕິໂມກ
ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນ[2]

[1] ຝູ.ມີຍລ ອງ.ມສກ. (ແວລ) ໒໔/໗໑/໑໕໖

[2] ຄຳວ່າ **ອາຈາຣະ** ໝາຍເຖິງຄວາມບໍ່ລ່ວງລະເມີດທາງກາຍ ທາງວາຈາ ແລະ ທາງໃຈ ຄວາມສຳລວມລະວັງໃນສີນທັງປວງ ແລະ ຄວາມທີ່ພິກຂຸບໍ່ລ້ຽງຊີວິດດ້ວຍມິດສາອາຊີວະທີ່ພຣະພຸດທະເຈົ້າຊົງຕຳນິ ຄຳວ່າ **ໂຄຈອນ** ໝາຍເຖິງການບໍ່ທ່ຽວໄປສູ່ສະຖານທີ່ບໍ່ຄວນທ່ຽວໄປ ເຊັ່ນ ທີ່ຢູ່ຂອງຍິງແພດສະຍາ ການບໍ່ຄຸກຄີກັບບຸກຄົນທີ່ບໍ່ສົມຄວນຄຸກຄີດ້ວຍ ເຊັ່ນ ພຣະຣາຊາ ການບໍ່ຄົບຫາກັບຕະກູນທີ່ບໍ່ສົມຄວນຄົບຫາ ເຊັ່ນ ຕະກູນທີ່ບໍ່ມີສັດທາ ບໍ່ມີຄວາມເຫຼື້ອມໃສພິກຂຸຜູ້ປະກອບດ້ວຍອາຈາຣະແລະໂຄຈອນດັ່ງກ່າວມານີ້ ຊື່ວ່າ ຜູ້ພຽບພ້ອມດ້ວຍອາຈາຣະແລະໂຄຈອນ (ອະພິ.ວິ. (ແປ) ໓໕/໕໑໓-໕໑໔/໓໙໙-໓໙໗)

ຈຶ່ງເປັນຜູ້ເຫັນໄພໃນໂທດແມ່ນພຽງເລັກໜ້ອຍ
ສະມາທານສຶກສາໃນສິກຂາບົດທັງຫຼາຍຢູ່ເທີ້ນ

[໖໕] ພິກຂຸທັງຫຼາຍ

໑. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ" ພິກຂຸນັ້ນ ເພິ່ງເຮັດສິນໃຫ້ບໍລິບູນ ໝັ່ນປະກອບທຳເຄື່ອງສະງົບໃຈພາຍໃນຕົນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ[1] ເພີ່ມພູນເຮືອນວ່າງ[2]

໒. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ" ພິກຂຸນັ້ນເພິ່ງເຮັດສິນໃຫ້ບໍລິບູນ ໝັ່ນປະກອບ ທຳເຄື່ອງສະງົບໃຈພາຍໃນຕົນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ

໓. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງບໍຣິໂພກຈີວອນ ບິນທະປາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຂອງຊົນເຫຼົ່າໃດ ຂໍສັກກາຣະຂອງຊົນເຫຼົ່ານັ້ນ ເພິ່ງມີຜົນຫຼາຍ ມີອານິສົງຫຼາຍ" ພິກຂຸນັ້ນ ເພິ່ງເຮັດສິນໃຫ້ບໍລິບູນ ໝັ່ນປະກອບທຳເຄື່ອງສະງົບໃຈພາຍໃນຕົນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ

໔. ຫາກພິກຂຸເພິ່ງຫວັງວ່າ "ຍາດສາໂລຫິດ[3] ເຫຼົ່າໃດຜູ້ລ່ວງລັບໄປແລ້ວ ມີຈິດ ເຫຼື້ອມໃສ ຣະນຶກເຖິງເຮົາຢູ່ ຂໍການຣະນຶກເຖິງເຮົາຂອງຍາດສາໂລຫິດເຫຼົ່ານັ້ນເພິ່ງມີຜົນຫຼາຍ ມີອານິສົງຫຼາຍ" ພິກຂຸນັ້ນ ເພິ່ງເຮັດສິນໃຫ້ບໍລິບູນ ໝັ່ນປະກອບທຳເຄື່ອງສະງົບໃຈພາຍໃນຕົນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ

[໖໖] ພິກຂຸທັງຫຼາຍ

---

[1] **ວິປັດສະນາ** ໝາຍເຖິງອະນຸປັດສະນາ ໗ ປະການ ຄື (໑) ອະນິດຈານຸປັດສະນາ (ພິຈາລະນາເຫັນຄວາມບໍ່ທ່ຽງ) (໒) ທຸກຂານຸປັດສະນາ (ພິຈາລະນາເຫັນຄວາມເປັນທຸກ) (໓) ອະນັດຕານຸປັດສະນາ (ພິຈາລະນາເຫັນຄວາມບໍ່ມີໂຕຕົນ) (໔) ນິບພິທານຸປັດສະນາ (ພິຈາລະນາເຫັນຄວາມໜ້າເບື່ອໜ່າຍ) (໕) ວິລາຄານຸປັດສະນາ (ພິຈາລະນາເຫັນຄວາມຄາຍກຳໜັດ) (໖) ນິໂຣທານຸປັດສະນາ (ພິຈາລະນາເຫັນຄວາມດັບກິເລດ) (໗) ປະຕິນິດສັກຄານຸປັດສະນາ (ພິຈາລະນາເຫັນຄວາມສະລັດຖິ້ມກິເລດ) (ມ.ມູ.ອ. ໑/໖໕/໑໖໙)

[2] **ເພີ່ມພູນເຮືອນວ່າງ** ໃນທີ່ນີ້ໝາຍເຖິງການຮຽນກັມມັດຖານ ຄື ສະມະຖະແລະວິປັດສະນາ ເຂົ້າໄປສູ່ເຮືອນວ່າງນັ່ງພິຈາລະນາຢູ່ຕະຫຼອດຄືນແລະວັນ ແລ້ວບຳເພັນອະທິຈິດຕະສິກຂາດ້ວຍສະມະຖະກັມມັດຖານ ບຳເພັນອະທິປັນຍາສິກຂາດ້ວຍວິປັດສະນາກັມມັດຖານ (ມ.ມູ.ອ. ໑/໖໔/໑໖໙-໑໗໐, ອັງ.ທະສະກະ.ອ. ໓/໗໑/໓໕໗)

[3] **ຍາດ** ໝາຍເຖິງບິດາມານດາຂອງສາມີ ຫຼື ບິດາມານດາຂອງພັນລະຍາແລະເຄືອຍາດຂອງທັງ ໒ ຝ່າຍ ສາໂລຫິດໝາຍເຖິງຜູ້ຮ່ວມສາຍເລືອດດຽວກັນ ໄດ້ແກ່ ລຸງຫຼືພໍ່ເຖົ້າ ເປັນຕົ້ນ (ມ.ມູ.ອ. ໑/໖໕/໑໗໒, ມ.ມູ.ຕີກາ ໑/໖໕/໓໒໙)

໕. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງຂົ່ມຄວາມບໍ່ຍິນດີ (ໃນກຸສົນທຳ) ແລະ ຄວາມຍິນດີ (ໃນກາມມະຄຸນ ໕) ອັນໜຶ່ງ ຄວາມບໍ່ຍິນດີ ບໍ່ເພິ່ງຄອບງຳເຮົາ ເຮົາເພິ່ງຄອບງຳຍ່ຳຍີຄວາມບໍ່ຍິນດີທີ່ເກີດຂຶ້ນຢູ່" ພິກຂຸນັ້ນເພິ່ງເຮັດສິນໃຫ້ ບໍລິບູນ ຯລຯ ເພີ່ມພູນເຮືອນວ່າງ

໖. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງເອົາຊະນະຄວາມຂີ້ຢ້ານ ອັນໜຶ່ງ ຄວາມບໍ່ຂີ້ຢ້ານບໍ່ເພິ່ງຄອບງຳເຮົາ ເຮົາເພິ່ງເອົາຊະນະ ຄອບງຳ ຍ່ຳຍີຄວາມຂີ້ຢ້ານທີ່ເກີດຂຶ້ນຢູ່" ພິກຂຸນັ້ນເພິ່ງເຮັດສິນໃຫ້ບໍລິບູນ ຯລຯ ເພີ່ມພູນເຮືອນວ່າງ

໗. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງໄດ້ຊານ ໔ ເຊິ່ງເປັນອະພິເຈຕະສິກ[໑] ເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ" ພິກຂຸນັ້ນເພິ່ງເຮັດສິນໃຫ້ບໍລິບູນ ຯລຯ ເພີ່ມພູນເຮືອນວ່າງ

໘. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງບັນລຸວິໂມກທີ່ສະຫງົບ ເປັນອະຣູປະຊານ ຍ້ອນກ້າວລ່ວງຣູປາວະຈອນຊານດ້ວຍນາມກາຍ" ພິກຂຸນັ້ນເພິ່ງເຮັດສິນໃຫ້ບໍລິບູນ ຯລຯ ເພີ່ມພູນເຮືອນວ່າງ

[໓໗] ພິກຂຸທັງຫຼາຍ

໙. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງເປັນພຣະໂສດາບັນ[໒] ຍ້ອນສັງໂຍດ[໓] ໓ ປະການສິ້ນໄປ ບໍ່ມີທາງຕົກຕ່ຳ[໔] ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິ[໕] ໃນວັນຂ້າງໜ້າ" ພິກຂຸນັ້ນເພິ່ງເຮັດສິນໃຫ້ບໍລິບູນ ຯລຯ ເພີ່ມພູນເຮືອນວ່າງ

---

໑ **ອະພິເຈຕະສິກ** ໝາຍເຖິງອຸປະຈາຣະສະມາທິ (ມ.ມູ.ອ. ໑/໖໖/໑໗໓)

໒ **ໂສດາບັນ** ໝາຍເຖິງຜູ້ປະກອບດ້ວຍອະຣິຍະມັກມີອົງ ໘ ເພາະຄຳວ່າ ໂສຕະ ເປັນຊື່ຂອງອະຣິຍະມັກມີອົງ ໘ (ອະພິ.ປັນຈະ.ອ. ໓໑/໕໓ ເບິ່ງປະກອບໃນ ສັງ.ມ. (ແປ) ໑໙/໑໐໐໑/໔໙໕)

໓ **ສັງໂຍດ** ໝາຍເຖິງກິເລດທີ່ຜູກມັດໃຈສັດ, ທຳທີ່ມັດໃຈສັດໄວ້ກັບທຸກ ມີ ໑໐ ປະການ ຄື (໑) ສັກກາຍະທິດຖິ (໒) ວິຈິກິດສາ (໓) ສີລັບພະຕະປະຣາມາດ (໔) ກາມສັນທະຫຼືກາມລາຄະ (໕) ພະຍາບາດຫຼືປະຕິຄະ (໖) ຣູປະຣາຄະ (໗) ອະຣູປະຣາຄະ (໘) ມານະ (໙) ອຸດທັດຈະ (໑໐) ອະວິດຊາ

໔ ຂໍ້ຕົ້ນຊື່ **ໂອຣັມພາຄິຍະສັງໂຍດ** ໕ ຂໍ້ຫຼັງຊື່ **ອຸທະທັມພາຄິຍະສັງໂຍດ** ພຣະໂສດາບັນລະສັງໂຍດ ໓ ຂໍ້ຕົ້ນໄດ້ ພຣະສະກະທາຄາມີເຮັດສັງໂຍດທີ່ ໔ ແລະທີ່ ໕ ໃຫ້ເບົາບາງ ພຣະອະນາຄາມີລະສັງໂຍດ ໕ ຂໍ້ຕົ້ນໄດ້ໝົດ ພຣະອະຣະຫັນລະສັງໂຍດໄດ້ໝົດທັງ ໑໐ ຂໍ້ (ອັງ.ທະສະກະ.(ແປ) ໒໔/໑໓/໒໑)

໕ **ບໍ່ມີທາງຕົກຕ່ຳ** ໝາຍເຖິງບໍ່ຕົກໄປໃນອະບາຍ ໔ ຄື ນະຣົກ ກຳເນີດສັດດີຣັດສານ ແດນເປດ ແລະພວກອະສູນ (ອັງ.ຕິກະ.ອ. ໒/໘໗/໒໔໒)

໖ **ສັມໂພທິ** ໃນທີ່ນີ້ໝາຍເຖິງມັກ ໓ ເບື້ອງສູງ (ສະກະທາຄາມີມັກ ອະນາຄາມີມັກ ແລະອະຣະຫັຕຕະມັກ) (ອັງ.ຕິກະ.ອ. ໒/໘໗/໒໔໒, ອັງ.ຕິກະ.ຕີກາ ໒/໘໗/໒໓໕)

໑໐. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງເປັນພຣະສະກະທາຄາມີ ຍ້ອນສັງໂຍດ ໓ ປະການສິ້ນໄປ (ແລະ) ຍ້ອນເຮັດຣາຄະ ໂທສະ ໂມຫະໃຫ້ເບົາບາງ ກັບມາສູ່ໂລກນີ້ອີກເທື່ອດຽວ ແລ້ວເຮັດທີ່ສຸດແຫ່ງທຸກໄດ້" ພິກຂຸນັ້ນ ເພິ່ງເຮັດສີນໃຫ້ບໍລິບູນ ໝັ່ນປະກອບທຳເຄື່ອງສະງົບໃຈພາຍໃນຕົນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ

໑໑. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງເປັນໂອປະປາຕິກະ[໑] ຍ້ອນໂອຣັມພາຄິຍະສັງໂຍດ ໕ ປະການສິ້ນໄປ ປະຣິນິບພານໃນພົມໂລກນັ້ນ ບໍ່ຕ້ອງກັບມາຈາກໂລກນັ້ນອີກ" ພິກຂຸນັ້ນເພິ່ງເຮັດສີນໃຫ້ບໍລິບູນ ຯລຯ ເພີ່ມພູນ ເຮືອນວ່າງ

[໖໗] ພິກຂຸທັງຫຼາຍ

໑໒. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງບັນລຸວິທີສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ບຸຝາກຳແພງ ແລະພູໄປໄດ້ບໍ່ຕິດຂັດເໝືອນໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືດຳລົງໃນແຜ່ນດິນ ເໝືອນໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກເໝືອນຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດເໝືອນນົກບິນໄປກໍໄດ້ ໃຊ້ຝ່າມືລູບຄຳດວງຈັນ ແລະດວງອາທິດອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້" ພິກຂຸນັ້ນເພິ່ງເຮັດສີນໃຫ້ບໍລິບູນ ຯລຯ ເພີ່ມພູນເຮືອນວ່າງ

໑໓. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງໄດ້ຍິນສຽງ ໒ ຊະນິດ ຄື (໑) ສຽງທິບ (໒) ສຽງມະນຸດ ທັງທີ່ຢູ່ໄກແລະຢູ່ໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດ" ພິກຂຸນັ້ນ ເພິ່ງເຮັດສີນໃຫ້ບໍລິບູນ ຯລຯ ເພີ່ມພູນເຮືອນວ່າງ

໑໔. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງກຳນົດຮູ້ໃຈຂອງສັດອື່ນແລະບຸກຄົນອື່ນ ຄື ຈິດມີຣາຄະກໍຮູ້ແຈ້ງວ່າ "ຈິດມີຣາຄະ" ຫຼື ຈິດປາສະຈາກຣາຄະກໍຮູ້ແຈ້ງວ່າ "ຈິດປາສະຈາກຣາຄະ" ຈິດມີໂທສະກໍຮູ້ແຈ້ງວ່າ "ຈິດມີໂທສະ" ຫຼື ຈິດປາສະຈາກໂທສະກໍຮູ້ແຈ້ງວ່າ "ຈິດປາສະຈາກໂທສະ" ຈິດມີໂມຫະກໍຮູ້ແຈ້ງວ່າ "ຈິດມີໂມຫະ" ຫຼື ຈິດປາສະຈາກໂມຫະກໍຮູ້ແຈ້ງວ່າ "ຈິດປາສະຈາກໂມຫະ" ຈິດຫົດຫູ່ກໍຮູ້ແຈ້ງວ່າ "ຈິດຫົດຫູ່" ຫຼື ຈິດຟຸ້ງຊ່ານກໍຮູ້ແຈ້ງວ່າ "ຈິດຟຸ້ງຊ່ານ" ຈິດ

---

[໑] **ໂອປະປາຕິກະ** ໝາຍເຖິງສັດທີ່ເກີດແລະໃຫຍ່ຂຶ້ນສົມບູນທັນທີ ແລະເມື່ອຈຸຕິ(ຕາຍ) ກໍຫາຍວັບໄປບໍ່ຖິ້ມຊາກສົບໄວ້ ເຊັ່ນ ເທວະດາແລະສັດນະຣົກເປັນຕົ້ນ (ທຸບ ທີ.ສີ.ອ. ໑໘໑/໑໔໙) ແຕ່ໃນທີ່ນີ້ໝາຍເຖິງພຣະອະນາຄາມີທີ່ເກີດໃນສຸດທາວາດ (ທີ່ຢູ່ຂອງທ່ານຜູ້ບໍລິສຸດ) ໕ ຊັ້ນ ມີຊັ້ນອະວິຫາເປັນຕົ້ນ ແລ້ວດຳລົງພາວະຢູ່ໃນຊັ້ນນັ້ນ ໆ ປະຣິນິພພານສິ້ນ ກິເລດໃນສຸດທາວາດນັ້ນເອງ ບໍ່ກັບມາເກີດເປັນມະນຸດອີກ (ອັງ.ຕິກະ.ອ. ໒/໗໘-໗໗/໒໔໒-໒໔໓)

ເປັນມະຫັກຄະຕະ[1] ກໍຮູ້ແຈ້ງວ່າ "ຈິດເປັນມະຫັກຄະຕະ" ຫຼື ຈິດ ບໍ່ເປັນມະຫັກຄະຕະກໍຮູ້ແຈ້ງ ວ່າ "ຈິດບໍ່ເປັນມະຫັກຄະຕະ" ຈິດມີຈິດອື່ນຍິ່ງກວ່າກໍຮູ້ແຈ້ງ ວ່າ "ຈິດມີ ຈິດອື່ນຍິ່ງກວ່າ" ຫຼື ຈິດ ບໍ່ມີຈິດອື່ນຍິ່ງກວ່າກໍຮູ້ແຈ້ງວ່າ "ຈິດບໍ່ມີ ຈິດອື່ນຍິ່ງກວ່າ" ຈິດເປັນສະມາທິກໍຮູ້ແຈ້ງວ່າ "ຈິດເປັນ ສະມາທິ" ຫຼື ຈິດບໍ່ເປັນສະມາທິກໍຮູ້ແຈ້ງວ່າ "ຈິດບໍ່ເປັນສະມາທິ" ຈິດລຸດພົ້ນກໍຮູ້ແຈ້ງວ່າ "ຈິດລຸດ ພົ້ນ" ຫຼື ຈິດບໍ່ລຸດພົ້ນກໍຮູ້ແຈ້ງວ່າ "ຈິດບໍ່ລຸດພົ້ນ" ພິກຂຸນັ້ນ ເພິ່ງເຮັດສິນໃຫ້ບໍລິບູນ ຯລຯ ເພີ່ມ ພູນເຮືອນວ່າງ

໑໕. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດ ຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບ ແລະວິວັດຕະກັບ[2] ເປັນຈຳນວນຫຼາຍແດ່ ວ່າ "ໃນພົບນັ້ນເຮົາ ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸ ແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້" ເຮົາຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງ ລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້" ພິກຂຸນັ້ນເພິ່ງເຮັດສິນໃຫ້ບໍລິບູນ ຯລຯ ເພີ່ມພູນ ເຮືອນວ່າງ

໑໖. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳ ແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງ ເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸຈະຣິດ ວະຈີທຸຈະຣິດ ແລະມະໂນທຸຈະ ຣິດ ກ່າວຮ້າຍ ພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິປາດ ນະຣົກ[3] ແຕ່ໝູ່ສັດທີ່ ປະກອບກາຍສຸຈະຣິດ ວະຈີສຸຈະຣິດ ແລະມະໂນສຸຈະຣິດ ບໍ່ກ່າວ ຮ້າຍພຣະອະຣິຍະ ມີຄວາມ ເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປ ເກີດໃນສຸຄະຕິໂລກສະຫວັນ ເຮົາເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ

---

໑ **ມະຫັກຄະຕະ** ໝາຍເຖິງອາລົມທີ່ເຖິງຄວາມເປັນໃຫຍ່ຊັ້ນຣູປາວະຈອນແລະຊັ້ນອະຣູປະວະຈອນ ເພາະມີພື້ນທີ່ ສາມາດຂົ່ມກິເລດໄດ້ ແລະໝາຍເຖິງສັນທະ ວິຣິຍະ ຈິດຕະ ແລະປັນຍາອັນຍິ່ງໃຫຍ່ (ອະພິ.ສັງ.ອ. ໑໘/໗໘)

໒ ເບິ່ງເຊີງອັດຖະທີ່ ໑ ຂໍ້ ໕໘ (ພະຍະເພຣະອະສູດ) ໜ້າ ໔໘ ໃນເຫຼັ້ມນີ້

໓ ຊື່ວ່າ **ອະບາຍ** ເພາະປາດສະຈາກຄວາມງອກງາມ ຄືຄວາມຈະເລີນຫຼືຄວາມສຸກ ຊື່ວ່າ ທຸຄະຕິ ເພາະເປັນຄະຕິ ຄື ເປັນທີ່ຕັ້ງແຫ່ງທຸກ ຊື່ວ່າ ວິນິບາດ ເພາະເປັນສະຖານທີ່ຕົກໄປຂອງໝູ່ສັດທີ່ທຳຄວາມຊົ່ວ ຊື່ວ່າ ນະຣົກ ເພາະປາດສະຈາກ ຄວາມຍິນດີ ເຫດເປັນທີ່ບໍ່ມີຄວາມສະບາຍໃຈ (ມ.ມູ.ອ. ໑/໑໕໑/໓໕໗)

ງາມແລະ ບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ" ພິກຂຸນັ້ນເພິ່ງເຮັດສິນໃຫ້ບໍລິບູນ ໝັ່ນປະກອບທຳເຄື່ອງສະງົບໃຈພາຍໃນຕົນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ

[໖໙] ພິກຂຸທັງຫຼາຍ

໑໗. ຫາກພິກຂຸເພິ່ງຫວັງວ່າ "ເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ[๑] ປັນຍາວິມຸດຕິ[๒] ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ" ພິກຂຸນັ້ນເພິ່ງເຮັດສິນໃຫ້ບໍລິບູນ ໝັ່ນປະກອບທຳເຄື່ອງສະງົບໃຈພາຍໃນຕົນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ ພິກຂຸທັງຫຼາຍ ເຮົາເຫັນປະໂຫຍດຈຶ່ງກ່າວວ່າ "ທ່ານທັງຫຼາຍຈົ່ງມີສິນສົມບູນ ມີປາຕິໂມກສົມບູນຢູ່ ຈົ່ງສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍ ອາຈາຣະແລະໂຄຈອນຢູ່ ຈົ່ງເປັນຜູ້ເຫັນໄພໃນໂທດແມ່ນພຽງເລັກໜ້ອຍ ສະມາທານສຶກສາໃນ ສິກຂາບົດທັງຫຼາຍ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອາກັງເຂີຍຍະສູດທີ ໖ ຈົບ**

# ໗. ວັດຖູປະມະສູດ

## ວ່າດ້ວຍຂໍ້ອຸປະມາດ້ວຍຜ້າ

[໗໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້

---

໘ **ເຈໂຕວິມຸດຕິ** ໝາຍເຖິງສະມາທິທີ່ສັມປະຍຸດດ້ວຍອະຣະຫັດຕະຜົນ ທີ່ຊື່ວ່າ ເຈໂຕວິມຸດຕິ ເພາະພົ້ນຈາກຣາຄະ (ທີ່ເປັນປະຕິປັກຂະທຳໂດຍກົງ ແຕ່ບໍ່ໄດ້ໝາຍຄວາມວ່າຈະລະງັບບາບທຳອື່ນບໍ່ໄດ້ ດູມ.ມູ.ຕີກາ ໑/໖໙/໓໓໔) ໃນທີ່ນີ້ໝາຍເຖິງຄວາມລຸດພົ້ນດ້ວຍມີສະມະຖະກຳມັດຖານເປັນພື້ນຖານ (ມ.ມູ.ອ. ໑/໖໙/໑໗໗, ທຽບ ອັງ.ທຸກ.ອ. ໘/໘໗/໖໘)

໙ **ປັນຍາວິມຸດຕິ** ໝາຍເຖິງປັນຍາທີ່ສະຫະຣະຄະຕະດ້ວຍອະຣະຫັດຕະຜົນນັ້ນ ທີ່ຊື່ວ່າ ປັນຍາວິມຸດຕິ ເພາະລຸດພົ້ນຈາກ ອະວິດຊາ (ທີ່ເປັນປະຕິປັກຂະທຳໂດຍກົງ ແຕ່ບໍ່ໄດ້ໝາຍຄວາມວ່າຈະລະງັບບາບທຳອື່ນບໍ່ໄດ້ ເບິ່ງ ມ.ມູ.ຕີກາ ໑/໖໙/໓໓໔) ໃນທີ່ນີ້ໝາຍເຖິງຄວາມລຸດພົ້ນດ້ວຍມີວິປັດສະນາກຳມັດຖານເປັນພື້ນຖານ (ມ.ມູ.ອ. ໑/໖໙/໑໗໗, ທຽບ ອັງ.ທຸກ.ອ. ໘/໘໗/໖໘)

ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ຊ່າງຍ້ອມຜ້າຈະເພິ່ງນຳຜ້າທີ່ສົກກະປົກ ເປິະເປື້ອນ ໃສ່ລົງໃນນ້ຳຍ້ອມສີ ຄື ສີຂຽວ ສີເຫຼືອງ ສີແດງ ຫຼື ສີຊົມພູ ຜ້າຜືນນັ້ນຈະເພິ່ງເປັນຜ້າທີ່ຍ້ອມໄດ້ບໍ່ດີ ມີສີບໍ່ສົດໃສ ຂໍ້ນັ້ນຍ້ອນເຫດໃດL ຍ້ອນຜ້າຜືນນັ້ນເປັນຜ້າທີ່ບໍ່ສະອາດ ແມ່ນສັນໃດ ເມື່ອຈິດເສົ້າໝອງ ທຸຄະຕິ[໑] ກໍເປັນອັນຫວັງໄດ້ ສັນນັ້ນຄືກັນ ຊ່າງຍ້ອມຜ້າ ຈະເພິ່ງນຳຜ້າທີ່ສະອາດມົດຈົດ ໃສ່ລົງໃນນ້ຳຍ້ອມສີ ຄື ສີຂຽວ ສີເຫຼືອງ ສີແດງ ຫຼື ສີຊົມພູ ຜ້າຜືນນັ້ນຈະເພິ່ງເປັນຜ້າທີ່ຍ້ອມໄດ້ດີ ມີສີສົດໃສ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຜ້າຜືນນັ້ນເປັນຜ້າທີ່ສະອາດ ແມ່ນສັນໃດ ເມື່ອຈິດບໍ່ເສົ້າໝອງ ສຸຄະຕິ[໒]ກໍເປັນອັນຫວັງໄດ້ ສັນນັ້ນຄືກັນ

## ອຸປະກິເລດແຫ່ງຈິດ ໑໖ ຊະນິດ

[໗໑] ພິກຂຸທັງຫຼາຍ ອຸປະກິເລດ[໓] ແຫ່ງຈິດ ອັນໃດແດ່? ຄື

໑. ອະພິດຊາວິສະມະໂລພະ (ຄວາມໂລບບໍ່ສະໝ່ຳສະເໝີ ຄື ຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ) ເປັນອຸປະກິເລດແຫ່ງຈິດ

໒. ພະຍາບາດ (ຄວາມຄິດປອງຮ້າຍຜູ້ອື່ນ) ເປັນອຸປະກິເລດແຫ່ງຈິດ

---

໑ ທຸຄະຕິ ມີ ໒ ຢ່າງ ຄື (໑) ປະຕິປັດຕິທຸຄະຕິ ໝາຍເຖິງຄະຕິຄືການປະຕິບັດຊົ່ວດ້ວຍອຳນາດກິເລດແບ່ງເປັນ ໒ ຢ່າງ ໄດ້ແກ່ ອາຄາຣິຍະປະຕິປັດຕິທຸຄະຕິ ຄືທຸຄະຕິຂອງຄະຫຼືຫັດຜູ້ມີຈິດເສົ້າໝອງຂ້າສັດ ລັກຊັບ ປະພຶດອະກຸສົລກຳມະບົດ ໑໐ ແລະອະນາຄາຣິຍະປະຕິປັດຕິທຸຄະຕິ ຄືຄະຕິຂອງບັນພະຊິດຜູ້ມີຈິດເສົ້າໝອງ ດິ້ນຣົນພະຍາຍາມທຳລາຍສົງ ທຳລາຍເຈດີ ປະພຶດອະນາຈານ (໒) ຄະຕິທຸຄະຕິ ໝາຍເຖິງຄະຕິຫຼືພູມເປັນທີ່ໄປອັນເປັນທຸກແບ່ງເປັນ ໒ ຢ່າງ ໄດ້ແກ່ ອາຄາຣິຍະທຸຄະຕິ ຄືຄະຕິຂອງຄະຫຼືຫັດຜູ້ຕາຍແລ້ວໄປເກີດໃນນະຣົກແດ່ ກຳເນີດສັດດິຣັດສານແດ່ ເປດວິໄສ ແດ່ ແລະອະນາຄາຣິຍະທຸຄະຕິ ຄືທຸຄະຕິຂອງບັນພະຊິດຜູ້ມໍຣະນະພາບແລ້ວ ໄປເກີດໃນນະຣົກເປັນຕົ້ນ ເປັນສະມະນະຍັກ ເປັນສະມະນະເປດ ມີກາຍລຸກແຈ້ງເພາະຜ້າສັງຄາຕິເປັນຕົ້ນ (ມ.ມູ.ອ. ໑/໗໐/໑໘໐, ມ.ມູ.ຕີກາ ໑/໗໐/໑໘໐)

໒ ສຸຄະຕິ ມີ ໒ ຢ່າງ ຄື (໑) ປະຕິປັດຕິສຸຄະຕິ ໝາຍເຖິງຄະຕິ ຄືການປະຕິບັດດີດ້ວຍຈິດບໍລິສຸດແບ່ງເປັນ ໒ ຢ່າງ ໄດ້ແກ່ ອາຄາຣິຍະປະຕິປັດຕິສຸຄະຕິ ມີຈິດບໍລິສຸດງົດເວັ້ນຈາກການຂ້າສັດແດ່ ຈາກການລັກຊັບແດ່ ບຳເພັນກຸສົນກຳມະບົດ ໑໐ ໃຫ້ບໍລິບູນ ອະນາຄາຣິຍະປະຕິປັດຕິສຸຄະຕິ ຄື ສຸຄະຕິຂອງບັນພະຊິດຜູ້ມີຈິດບໍລິສຸດ ຖືຮັກສາປາຣິສຸດທິສີນ ໔ ໃຫ້ບໍລິສຸດ ສະມາທານທຸດົງ ໑໓ ຂໍ້ ຮຽນກຳມັດຖານໃນອາລົມ ໓໘ ປະການ ກະທຳກະສິນບໍຣິກຳ ເຮັດຊານສະມາບັດໃຫ້ເກີດຂຶ້ນ ຈະເລີນໂສດາປັດຕິມັກ ຯລຯ ອະນາຄາມິມັກ (໒) ຄະຕິສຸຄະຕິ ໝາຍເຖິງຄະຕິຫຼືພູມເປັນທີ່ໄປອັນເປັນສຸກ ແບ່ງເປັນ ໒ ຢ່າງ ໄດ້ແກ່ ອາຄາຣິຍະສຸຄະຕິ ຄືສຸຄະຕິຂອງຄະຫຼືຫັດຜູ້ຕາຍແລ້ວໄປເກີດເປັນມະນຸດທີ່ມີຊາດຕະກູນສູງ ມັ່ງຄັ່ງດ້ວຍຊັບ ພຽບພ້ອມດ້ວຍກຽດຕິຍົດແດ່ ເປັນເທວະດາທີ່ມີສັກໃຫຍ່ແດ່ ແລະອະນາຄາຣິຍະສຸຄະຕິ ຄືຄະຕິ ຂອງບັນພະຊິດຜູ້ມໍຣະນະພາບແລ້ວໄປເກີດໃນຕະກູນກະສັດ ຕະກູນພາມ ແລະຕະກູນຄະຫະບໍດີ ຫຼືໄປເກີດໃນກາມາວະຈອນເທວະໂລກ ໖ ຊັ້ນແດ່ ໃນພົມໂລກ ໑໐ ຊັ້ນ ໃນສຸດທາວາດພູມ ໕ ຊັ້ນ ຫຼືໃນອະຣູປະພົມ ໔ ຊັ້ນແດ່ (ມ.ມູ.ອ. ໑/໗໐/໑໘໐)

໓ ອຸປະກິເລດ ໝາຍເຖິງກິເລດທີ່ຈອນມາດ້ວຍອຳນາດໂລພະ ໂທສະ ແລະໂມຫະ ແລ້ວທຳຈິຕເດີມ (ພະວັງຄະຈິດ) ທີ່ແມ່ນປົກກະຕິກໍບໍລິສຸດຢູ່ແລ້ວໃຫ້ຕ້ອງເສົ້າໝອງ (ມ.ມູ.ອ. ໑/໗໑/໑໘໑, ອັງ.ເອກກະ.ອ. ໑/໔໗/໕໓)

໔ ວິ.ອ. ໑/໑/໑໐໓-໑໑໘, ອັງ.ທຸກ.(ແປ) ໒໐/໖໔/໒໕໗

| | | |
|---|---|---|
| ໓. ໂກທະ | (ຄວາມໂກດ) | ເປັນອຸປະກິເລດແຫ່ງຈິດ |
| ໔. ອຸປະນາຫະ | (ຄວາມຜູກໂກດ) | ເປັນອຸປະກິເລດແຫ່ງຈິດ |
| ໕. ມັກຂະ | (ຄວາມລົບຫູ່ຄຸນທ່ານ) | ເປັນອຸປະກິເລດແຫ່ງຈິດ |
| ໖. ປະລາສະ | (ຄວາມຕີສະເໝີ) | ເປັນອຸປະກິເລດແຫ່ງຈິດ |
| ໗. ອິດສາ | (ຄວາມຣິດສະຫຍາ) | ເປັນອຸປະກິເລດແຫ່ງຈິດ |
| ໘. ມັດສະຣິຍະ | (ຄວາມຂີ້ຖີ່) | ເປັນອຸປະກິເລດແຫ່ງຈິດ |
| ໙. ມາຍາ | (ມານຍາ) | ເປັນອຸປະກິເລດແຫ່ງຈິດ |
| ໑໐. ສາເຖີຍຍະ | (ຄວາມໂອ້ອວດ) | ເປັນອຸປະກິເລດແຫ່ງຈິດ |
| ໑໑. ຖໍາພະ | (ຄວາມຫົວດື້) | ເປັນອຸປະກິເລດແຫ່ງຈິດ |
| ໑໒. ສາຣໍາພະ | (ຄວາມແຂ່ງດີ) | ເປັນອຸປະກິເລດແຫ່ງຈິດ |
| ໑໓. ມານະ | (ຄວາມຖືຕົວ) | ເປັນອຸປະກິເລດແຫ່ງຈິດ |
| ໑໔. ອະຕິມານະ | (ຄວາມດູໝິ່ນເຂົາ) | ເປັນອຸປະກິເລດແຫ່ງຈິດ |
| ໑໕. ມະທະ | (ຄວາມມົວເມົາ) | ເປັນອຸປະກິເລດແຫ່ງຈິດ |
| ໑໖. ປະມາທະ | (ຄວາມຜະໝາດ) | ເປັນອຸປະກິເລດແຫ່ງຈິດ |

[໗໒] ພິກຂຸທັງຫຼາຍ ພິກຂຸນັ້ນຮູ້ແຈ້ງດັ່ງນີ້ວ່າ

"ອະພິດຊາວິສະມະໂລພະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະອະພິດຊາວິສະມະໂລພະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ພະຍາບາດ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະພະຍາບາດອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ໂກທະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະໂກທະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ອຸປະນາຫະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະອຸປະນາຫະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ມັກຂະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະມັກຂະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ປະລາສະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະປະລາສະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ອິດສາ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະອິດສາອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ມັດສະຣິຍະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະມັດສະຣິຍະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ມາຍາ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະມາຍາອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ສາເຖີຍຍະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະສາເຖີຍຍະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ຖໍາພະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະຖໍາພະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ສາຣໍາພະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະສາຣໍາພະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ມານະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະມານະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ອະຕິມານະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະອະຕິມານະອັນເປັນອຸປະກິເລດແຫ່ງຈິດໄດ້ ຯລຯ "ມະທະ ເປັນອຸປະກິເລດແຫ່ງຈິດ"

ແລ້ວຈຶ່ງລະມະທະອັນເປັນອຸປະກິເລດແຫ່ງຈິດໄດ້

ພິກຂຸນັ້ນ ຮູ້ແຈ້ງດັ່ງນີ້ວ່າ "ປະມາທະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະປະມາທະອັນເປັນອຸປະກິເລດແຫ່ງຈິດໄດ້

[໗໓] ພິກຂຸທັງຫຼາຍ ໃນການໃດ ພິກຂຸຮູ້ແຈ້ງດັ່ງນີ້ ວ່າ

"ອະພິດຊາວິສະມະໂລພະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະອະພິດຊາວິສະມະໂລພະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ພະຍາບາດ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະພະຍາບາດອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ໂກທະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະໂກທະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ອຸປະນາທະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະອຸປະນາທະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ມັກຂະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະມັກຂະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ປະລາສະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະປະລາສະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ອິດສາ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະອິດສາອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ມັດສະຣິຍະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະມັດສະຣິຍະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ມາຍາ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະມາຍາອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ສາເຖີຍຍະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະສາເຖີຍຍະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ຖຳພະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະຖຳພະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ສາຣຳພະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະສາຣຳພະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ມານະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະມານະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ອະຕິມານະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະອະຕິມານະອັນເປັນອຸປະກິເລດແຫ່ງຈິດໄດ້ ฯລฯ "ມະທະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະມະທະອັນເປັນອຸປະກິເລດແຫ່ງຈິດໄດ້

ພິກຂຸຜູ້ຮູ້ແຈ້ງດັ່ງນີ້ວ່າ "ປະມາທະ ເປັນອຸປະກິເລດແຫ່ງຈິດ" ແລ້ວຈຶ່ງລະປະມາທະອັນເປັນອຸປະກິເລດແຫ່ງຈິດໄດ້

[໗໔] ໃນການນັ້ນ ພິກຂຸນັ້ນ ຈະມີຄວາມເຫຼື້ອມໃສແນ່ວແນ່ໃນພຣະພຸດທະເຈົ້າວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ຈະມີຄວາມເຫຼື້ອມໃສແນ່ວແນ່ໃນພຣະທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະ

ເພາະຕົນ" ແລະ ຈະມີຄວາມເຫຼື້ອມໃສແນ່ວແນ່ໃນພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ[໑] ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນເນື້ອນາບຸນອັນປະເສີດຂອງໂລກ"

[໗໕] ຍ້ອນເຫດທີ່ພິກຂຸນັ້ນສະຫຼະ ຄາຍ ປ່ອຍ ລະ ກຳຈັດຖິ້ມສ່ວນແຫ່ງກິເລດໄດ້ແລ້ວ ພິກຂຸຍ່ອມໄດ້ຄວາມຮູ້ແຈ້ງອັດຖະ ຄວາມຮູ້ແຈ້ງທຳ ແລະຄວາມປາໂມດອັນປະກອບດ້ວຍທຳວ່າ "ເຮົາມີຄວາມເຫຼື້ອມໃສແນ່ວແນ່ໃນພຣະພຸດທະເຈົ້າ" ເມື່ອພິກຂຸມີປາໂມດແລ້ວ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ທ່ານມີກາຍສະງົບແລ້ວຍ່ອມສະເຫວີຍສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ ຯລຯ"ເຮົາມີຄວາມເຫຼື້ອມໃສແນ່ວແນ່ໃນພຣະທຳ" ພິກຂຸຍ່ອມໄດ້ຄວາມຮູ້ແຈ້ງອັດຖະ ຄວາມຮູ້ແຈ້ງທຳ ແລະຄວາມປາໂມດອັນປະກອບດ້ວຍທຳວ່າ "ເຮົາມີຄວາມເຫຼື້ອມໃສແນ່ວແນ່ໃນພຣະສົງ" ເມື່ອພິກຂຸມີປາໂມດແລ້ວ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ພິກຂຸມີກາຍສະງົບແລ້ວຍ່ອມສະເຫວີຍສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ ພິກຂຸຮູ້ວ່າ "ຍ້ອນເຮົາສະຫຼະ ຄາຍ ປ່ອຍ ລະ ກຳຈັດຖິ້ມສ່ວນແຫ່ງກິເລດໄດ້ແລ້ວ" ຈຶ່ງໄດ້ຄວາມຮູ້ແຈ້ງອັດຖະ ຄວາມຮູ້ແຈ້ງທຳ ແລະຄວາມປາໂມດອັນປະກອບດ້ວຍທຳ ເມື່ອພິກຂຸມີປາໂມດແລ້ວ ປີຕິ ຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ພິກຂຸມີກາຍສະງົບແລ້ວຍ່ອມສະເຫວີຍສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ

[໗໖] ພິກຂຸນັ້ນ ມີສີນແນວນີ້ ມີທຳແນວນີ້ ມີປັນຍາແນວນີ້ ເຖິງວ່າ ພິກຂຸສັນອາຫານບິນທະບາດເຂົ້າສາລີທີ່ເລືອກຂອງສີກກະປົກອອກແລ້ວ ມີແກງມີກັບເຂົ້າຫຼາຍແນວ ການສັນບິນທະບາດຂອງພິກຂຸນັ້ນ ບໍ່ເປັນອັນຕະລາຍແກ່ມັກແລະຜົນເລີຍ ຜ້າທີ່ສົກກະປົກເປິະເປື້ອນຈະເປັນຜ້າທີ່ສະອາດມົດຈົດໄດ້ ຍ້ອນອາໄສນ້ຳໃສສະອາດ ຫຼື ທອງຄຳ ຈະເປັນທອງຄຳບໍລິສຸດຜຸດຜ່ອງໄດ້ຍ້ອນອາໄສເບົ້າຫຼອມ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ມີສີນແນວນີ້ ມີທຳແນວນີ້ ມີປັນຍາແນວນີ້ ເຖິງວ່າ ພິກຂຸສັນອາຫານບິນທະບາດເຂົ້າສາລີທີ່ເລືອກຂອງສົກກະປົກອອກແລ້ວ ມີແກງມີກັບເຂົ້າຫຼາຍແນວ ການສັນບິນທະບາດຂອງ ພິກຂຸນັ້ນ ບໍ່ເປັນອັນຕະລາຍແກ່ມັກແລະຜົນເລີຍ

[໗໗] ພິກຂຸນັ້ນ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ

---

໑ **໘ ບຸກຄົນ** ໄດ້ແກ່ (໑) ບຸກຄົນຜູ້ເປັນພຣະໂສດາບັນ (໒) ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ (໓) ບຸກຄົນຜູ້ເປັນພຣະສະກະທາຄາມີ (໔) ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ (໕) ບຸກຄົນຜູ້ເປັນພຣະອະນາຄາມີ(໖) ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ (໗) ບຸກຄົນຜູ້ເປັນພຣະອະຣະຫັນ (໘) ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ (ອະພິ.ປຸ. (ແປ) ໓໖/໒໐໗/໒໒໙)

ໃນທີ່ທຸກສະຖານດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

[໗໘] ພິກຂຸນັ້ນຮູ້ແຈ້ງວ່າ "ສິ່ງນີ້ມີຢູ່ ສິ່ງທີ່ຊົ່ວມີຢູ່ ສິ່ງທີ່ປະນີດມີຢູ່ ທຳ ເຄື່ອງກຳຈັດອອກຈາກກິເລດ[1] ທີ່ຍິ່ງກວ່າສັນຍານີ້[2] ກໍມີຢູ່" ເມື່ອພິກຂຸຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະ ອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ[3] ເຮັດກິດທີ່ຄວນເຮັດ ສຳເລັດແລ້ວ[4] ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ[5]" ພິກຂຸນີ້ເຮົາຮຽກວ່າ ເປັນຜູ້ອາບ ສະອາດແລ້ວດ້ວຍການອາບສະອາດໃນພາຍໃນ"

## ການອາບນ້ຳໃນພຣະສາດສະໜາ

[໗໙] ໃນສະໄໝນັ້ນ ພາມຊື່ ສຸນທະຣິກພາຣະທະວາຊະ ນັ່ງຢູ່ບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມສະເດັດໄປສູ່ແມ່ນ້ຳພາຫຸກາເພື່ອອາບນ້ຳແດ່ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ແມ່ນ້ຳພາຫຸກາຈະມີປະໂຫຍດອັນໃດ ແມ່ນ້ຳພາຫຸກາຈັກເຮັດຫຍັງໄດ້"

ສຸນທະຣິກພາຣະທະວາຊະພາມຂາບທູນວ່າ "ທ່ານພຣະໂຄດົມ ຄົນຈຳນວນຫຼາຍຖືກັນວ່າ ແມ່ນ້ຳພາຫຸກາໃຫ້ຄວາມບໍລິສຸດໄດ້ ຄົນຈຳນວນຫຼາຍຖືກັນວ່າ ແມ່ນ້ຳພາຫຸກາເປັນບຸນສະຖານ ອັນໜຶ່ງ ຄົນຈຳນວນຫຼາຍລອຍບາບກຳທີ່ຕົນເຮັດແລ້ວໃນແມ່ນ້ຳພາຫຸການັ້ນ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບສຸນທະຣິກພາຣະທະວາຊະພາມດ້ວຍພຣະຄາຖາ ວ່າ

---

໑ **ທຳເຄື່ອງສະລັດອອກຈາກກິເລດ** ໃນທີ່ນີ້ໝາຍເຖິງນິບພານ (ມ.ມູ.ອ. ໑/໗໘/໑໗໙)

໒ **ສັນຍາ** ໃນທີ່ນີ້ໝາຍເຖິງພົມວິຫານສັນຍາ (ມ.ມູ.ອ. ໑/໗໘/໑໗໙)

໓ ………………

໔ …………..

໕ ໓-໕ ເບິ່ງເຊີງອັດຖະທີ່ ໑ - ໓ ຂໍ້ ໕໔ (ພະຍະເພຣະອະສູດ) ໜ້າ ໔໓ ໃນເຫຼັ້ມນີ້

"ຄົນພານທີ່ມີກຳຊົ່ວ ແມ່ນຈະໄປສູ່ແມ່ນ້ຳພາຫຸກາ
ທ່ານ້ຳອະທິກັກກະ ທ່ານ້ຳຄະຍາ ແມ່ນ້ຳສຸນທະຣິກາ ແມ່ນ້ຳສະຣັດສະດີ
ທ່ານ້ຳປະຍາຄະ ແລະ ແມ່ນ້ຳພາຫຸມະດີ ເປັນປະຈຳ ກໍຍັງບໍລິສຸດບໍ່ໄດ້
ແມ່ນ້ຳສຸນທະຣິກາ ທ່ານ້ຳປະຍາຄະ ແມ່ນ້ຳພາຫຸກາ ຈັກເຮັດຫຍັງໄດ້
ຈະເພິ່ງຊຳລະຄົນຜູ້ມີເວນ ຜູ້ເຮັດກຳຫຍາບຊ້າ ຜູ້ມີກຳຊົ່ວນັ້ນ
ໃຫ້ບໍລິສຸດບໍ່ໄດ້ເລີຍ

ຜັກຄຸນະເລີກ[๑] ເປັນເລີກດີທຸກເມື່ອສຳລັບຜູ້ບໍລິສຸດ
ອຸໂປສົດເປັນວັນສັກສິດທຸກເມື່ອສຳລັບຜູ້ບໍລິສຸດ
ຂໍ້ວັດປະຕິບັດປະຕິບັດສົມບູນທຸກເມື່ອສຳລັບຜູ້ບໍລິສຸດ ມີກຳສະອາດ

ພາມ ທ່ານຈົ່ງອາບນ້ຳໃນສາດສະໜາຂອງເຮົານີ້ເທີ້ນ
ທ່ານຈົ່ງທຳຄວາມປອດໄພໃນສັດທັງປວງເທີ້ນ
ຖ້າທ່ານບໍ່ເວົ້າຕົວະ ບໍ່ບຽດບຽນສັດ
ບໍ່ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ມີຄວາມເຊື່ອ
ບໍ່ຂີ້ຖີ່ແລ້ວ ທ່ານຈະໄປສູ່ທ່ານ້ຳຄະຍາເຮັດຫຍັງ?
ແມ່ນຮອດການດື່ມນ້ຳຈາກທ່ານ້ຳຄະຍາຈັກມີປະໂຫຍດອັນໃດແກ່ທ່ານບໍ"

## ສຸນທະຣິກພາມເປັນພຣະອະຣະຫັນ

[໗໐] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນັ້ນແລ້ວ ສຸນທະຣິກພາຣະທະວາຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນ ໄພເລາະ ມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນ ມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບເໝືອນບຸກຄົນ ຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ ຂໍເຖິງທ່ານພຣະໂຄດົມ ພ້ອມທັງ ພຣະທຳ ແລະ ພຣະສົງເປັນສະຣະນະ ຂໍໃຫ້ຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດ ໃນສຳນັກຂອງທ່ານພຣະໂຄດົມເທີ້ນ"

ສຸນທະຣິກພາຣະທະວາຊະພາມ ໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ບໍ່ດົນກໍຫຼີກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນ

---

໑ **ຜັກຄຸນະເລີກ** ໝາຍເຖິງງານນັກຂັດເລີກປະຈຳເດືອນ ໔ ທີ່ພາມຖືວ່າຜູ້ທີ່ຊຳຣະຫຼືອາບນ້ຳໃນວັນຂ້າງຂຶ້ນເດືອນ ໔ ໄດ້ຊື່ວ່າຊຳຣະບາບທີ່ເຮັດມາແລ້ວຕະຫຼອດປີໄດ້ (ມ.ມູ.ອ. ໑/໗໙/໑໗໑)

ຫຼາຍກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຊອບຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນໄດ້ຮູ້ແຈ້ງເອງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພິກຂຸພຣະພາຣະຫະວາຊະ ໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ ດັ່ງນີ້ແລ

**ວັດຖູປະມະສູດທີ ໗ ຈົບ**

# ໘. ສັນເລຂະສູດ

## ວ່າດ້ວຍທຳເຄື່ອງຂັດເກົາກິເລດ

[໘໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ເມື່ອໃນເວລາເຢັນ ທ່ານພຣະມະຫາຈຸນທະອອກຈາກທີ່ຫຼີກເຣັ້ນ[໑] ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ມີທິດຖິຫຼາຍປະການໃນໂລກກ່ຽວກັບອັດຕະວາທະ[໒]ແດ່ ກ່ຽວກັບໂລກວາທະ[໓]ແດ່ ເມື່ອພິກຂຸມະນະສິການພຽງເບື້ອງຕົ້ນ ກໍລະກຳຈັດຖິ້ມທິດຖິເຫຼົ່ານັ້ນໄດ້ຢ່າງນັ້ນແມ່ນບໍ?"

[໘໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຈຸນທະ ມີທິດຖິຫຼາຍປະການໃນໂລກກ່ຽວກັບອັດຕະວາທະແດ່ ກ່ຽວກັບໂລກວາທະແດ່ ເມື່ອພິກຂຸເຫັນອາລົມເປັນທີ່ເກີດຂຶ້ນ ເປັນທີ່ໝັກໝົມ ແລະ ເປັນທີ່ທ່ອງທ່ຽວແຫ່ງທິດຖິເຫຼົ່ານັ້ນຕາມຄວາມເປັນຈິງ ດ້ວຍປັນຍາອັນຊອບຢ່າງນີ້ວ່າ "ນັ້ນ

---

໑ **ທີ່ຫຼີກເຣັ້ນ** ໃນທີ່ນີ້ໝາຍເຖິງຜົນສະມາບັດຊັ້ນສູງສຸດ (ມ.ມູ.ອ. ໑/໘໑/໑໗໔)

໒ **ອັດຕະວາທະ** ໝາຍເຖິງມິດສາທິດຖິທີ່ປາຣົບອັດຕາ ເຊັ່ນ ເຫັນວ່າຮູບເປັນອັດຕາເປັນຕົ້ນ (ມ.ມູ.ອ. ໑/໘໑/໑໗໔)

໓ **ໂລກະວາທະ** ໝາຍເຖິງມິດສາທິດຖິທີ່ປາຣົບໂລກ ເຊັ່ນ ເຫັນວ່າ ອັດຕາແລະໂລກທ່ຽງເປັນຕົ້ນ (ມ.ມູ.ອ. ໑/໘໑/໑໗໔)

ບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ” ກໍລະ ກໍາຈັດຖິ້ມທິດຖິເຫຼົ່ານັ້ນໄດ້

## ອົງຊານ ໔ ແລະອະຣູປະຊານ ໔

ຈຸນທະ ເປັນໄປໄດ້ທີ່ພິກຂຸບາງອົງໃນທໍາວິໄນນີ້ ສະຫງັດຈາກກາມແລະອະກຸສົນທໍາທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ພິກຂຸນັ້ນເພິ່ງມີຄວາມຄິດຢ່າງນີ້ວ່າ “ເຮົາຢູ່ດ້ວຍທໍາເຄື່ອງຂັດເກົາກິເລດ” ທໍາຄືປະຖົມຊານນີ້ ເຮົາບໍ່ກ່າວວ່າ ເປັນທໍາເຄື່ອງຂັດເກົາກິເລດໃນອະຣິຍະວິໄນ ແຕ່ເຮົາກ່າວວ່າ ເປັນທໍາເຄື່ອງຢູ່ເປັນສຸກໃນປັດຈຸບັນໃນອະຣິຍະວິໄນ

ເປັນໄປໄດ້ທີ່ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບາງອົງໃນທໍາວິໄນນີ້ ບັນລຸທຸຕິຍະຊານເຊິ່ງມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ພິກຂຸນັ້ນເພິ່ງມີຄວາມຄິດຢ່າງນີ້ວ່າ “ເຮົາຢູ່ດ້ວຍ ທໍາເຄື່ອງຂັດເກົາກິເລດ” ທໍາຄືທຸຕິຍະຊານນີ້ ເຮົາບໍ່ກ່າວວ່າ ເປັນທໍາເຄື່ອງ ຂັດເກົາກິເລດໃນອະຣິຍະວິໄນ ແຕ່ເຮົາກ່າວວ່າ ເປັນທໍາເຄື່ອງຢູ່ເປັນສຸກໃນປັດຈຸບັນໃນອະຣິຍະວິໄນ

ເປັນໄປໄດ້ທີ່ຍ້ອນປີຕິຈາງຄາຍອອກ ພິກຂຸລາງອົງໃນທໍາວິໄນນີ້ມີອຸເປກຂາ ມີສະຕິສໍາປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນ ວ່າ “ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ” ພິກຂຸເພິ່ງມີຄວາມຄິດແນວນີ້ວ່າ “ເຮົາຢູ່ດ້ວຍທໍາ ເຄື່ອງຂັດເກົາກິເລດ” ທໍາຄືຕະຕິຍະຊານນີ້ ເຮົາບໍ່ກ່າວວ່າ ເປັນທໍາເຄື່ອງຂັດເກົາ ກິເລດໃນອະຣິຍະວິໄນ ແຕ່ເຮົາກ່າວວ່າ ເປັນທໍາເຄື່ອງຢູ່ເປັນສຸກໃນປັດຈຸບັນໃນອະຣິຍະວິໄນ

ເປັນໄປໄດ້ທີ່ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ພິກຂຸລາງອົງໃນທໍາວິໄນນີ້ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນ ອຸເປກຂາຢູ່ ພິກຂຸເພິ່ງມີຄວາມຄິດແນວນີ້ວ່າ “ເຮົາຢູ່ດ້ວຍທໍາເປັນເຄື່ອງຂັດເກົາກິເລດ” ທໍາຄືຈະຕຸດຖະຊານນີ້ ເຮົາບໍ່ກ່າວວ່າ ເປັນທໍາເຄື່ອງຂັດເກົາກິເລດໃນອະຣິຍະວິໄນ ແຕ່ເຮົາກ່າວວ່າ ເປັນທໍາເຄື່ອງຢູ່ເປັນສຸກໃນປັດຈຸບັນໃນອະຣິຍະວິໄນ

ເປັນໄປໄດ້ທີ່ຍ້ອນກ້າວລ່ວງຣູບສັນຍາ ດັບປະຕິຄະສັນຍາ ບໍ່ກໍານົດນານັດຕະສັນຍາໂດຍປະການທັງປວງ ພິກຂຸລາງອົງໃນທໍາວິໄນນີ້ ບັນລຸອາກາສານັນຈາຍະຕະນະຊານໂດຍກໍານົດວ່າ “ອາກາດຫາບ່ອນສຸດບໍ່ໄດ້” ພິກຂຸເພິ່ງມີຄວາມຄິດແນວນີ້ວ່າ “ເຮົາຢູ່ດ້ວຍທໍາເປັນເຄື່ອງຂັດເກົາກິເລດ” ທໍາຄືອາກາສານັນຈາຍະຕະນະຊານນີ້ ເຮົາບໍ່ກ່າວວ່າ ເປັນທໍາເຄື່ອງຂັດເກົາກິເລດໃນອະຣິຍະວິໄນ ແຕ່ເຮົາກ່າວວ່າ ເປັນທໍາເຄື່ອງຢູ່ສະງົບໃນປັດຈຸບັນໃນອະຣິຍະວິໄນ

ເປັນໄປໄດ້ທີ່ຍ້ອນກ້າວລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸລາງອົງໃນທຳວິໄນນີ້ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ພິກຂຸເພິ່ງມີຄວາມຄິດແນວນີ້ວ່າ "ເຮົາຢູ່ດ້ວຍທຳເປັນເຄື່ອງຂັດເກົາກິເລດ" ທຳຄື ວິນຍານັນຈາຍະຕະນະຊານນີ້ ເຮົາບໍ່ກ່າວວ່າ ເປັນທຳເຄື່ອງຂັດເກົາກິເລດໃນອະຣິຍະວິໄນ ແຕ່ເຮົາກ່າວວ່າ ເປັນທຳເຄື່ອງຢູ່ສະງົບໃນອະຣິຍະວິໄນ

ເປັນໄປໄດ້ທີ່ຍ້ອນກ້າວລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸລາງອົງໃນທຳວິໄນນີ້ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ພິກຂຸເພິ່ງມີຄວາມຄິດແນວນີ້ວ່າ "ເຮົາຢູ່ດ້ວຍທຳເປັນເຄື່ອງຂັດເກົາກິເລດ" ທຳຄືອາກິນຈັນຍາຍະຕະນະຊານນີ້ ເຮົາບໍ່ກ່າວວ່າ ເປັນທຳເຄື່ອງຂັດເກົາກິເລດໃນອະຣິຍະວິໄນ ແຕ່ເຮົາກ່າວວ່າ ເປັນທຳເຄື່ອງຢູ່ສະງົບໃນອະຣິຍະວິໄນ

ຈຸນທະ ເປັນໄປໄດ້ ທີ່ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸລາງອົງໃນທຳວິໄນນີ້ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ພິກຂຸເພິ່ງມີຄວາມຄິດແນວນີ້ວ່າ "ເຮົາຢູ່ດ້ວຍທຳເປັນເຄື່ອງຂັດເກົາກິເລດ" ທຳຄືເນວະສັນຍານາສັນຍາຍະຕະນະຊານນີ້ ເຮົາບໍ່ກ່າວວ່າ ເປັນທຳເຄື່ອງຂັດເກົາກິເລດໃນອະຣິຍະວິໄນ ແຕ່ເຮົາກ່າວວ່າ ເປັນທຳເຄື່ອງຢູ່ສະງົບໃນອະຣິຍະວິໄນ

## ຂໍ້ປະຕິບັດເພື່ອຂັດເກົາກິເລດ

[໗໘] ຈຸນທະ ໃນການບຽດບຽນກັນເປັນຕົ້ນນີ້ ທ່ານທັງຫຼາຍຄວນທຳຄວາມຂັດເກົາກິເລດ ຄື ທ່ານທັງຫຼາຍຄວນທຳຄວາມຂັດເກົາກິເລດໂດຍຄິດວ່າ "ຊົນເຫຼົ່າອື່ນຈັກເປັນຜູ້ບຽດບຽນກັນໃນເລື້ອງນີ້ ເຮົາທັງຫຼາຍຈັກເປັນຜູ້ບໍ່ບຽດບຽນກັນ"

ฯລฯ "ຊົນເຫຼົ່າອື່ນຈັກຂ້າສັດ ໃນເລື້ອງນີ້ ເຮົາທັງຫຼາຍຈັກເວັ້ນຈາກການຂ້າສັດ"
ฯລฯ "ຊົນເຫຼົ່າອື່ນຈັກລັກຊັບ ໃນເລື້ອງນີ້ ເຮົາທັງຫຼາຍຈັກເວັ້ນຈາກການລັກຊັບ"
ฯລฯ "ຊົນເຫຼົ່າອື່ນຈັກບໍ່ປະພຶດພົມມະຈັນ ໃນເລື້ອງນີ້ ເຮົາທັງຫຼາຍຈັກປະພຶດພົມມະຈັນ"
ฯລฯ "ຊົນເຫຼົ່າອື່ນຈັກເວົ້າຕົວະ ໃນເລື້ອງນີ້ ເຮົາທັງຫຼາຍຈັກເວັ້ນຈາກການເວົ້າຕົວະ"
ฯລฯ "ຊົນເຫຼົ່າອື່ນຈັກເວົ້າສັບສໍ່ ໃນເລື້ອງນີ້ ເຮົາທັງຫຼາຍຈັກເວັ້ນຈາກການເວົ້າສັບສໍ່"
ฯລฯ "ຊົນເຫຼົ່າອື່ນຈັກເວົ້າຄຳຫຍາບ ໃນເລື້ອງນີ້ ເຮົາທັງຫຼາຍຈັກເວັ້ນຈາກການເວົ້າ ຄຳຫຍາບ"
ฯລฯ "ຊົນເຫຼົ່າອື່ນຈັກເວົ້າບໍ່ມີສາຣະ ໃນເລື້ອງນີ້ ເຮົາທັງຫຼາຍຈັກເວັ້ນຈາກການເວົ້າບໍ່ມີສາຣະ"

ຯລຯ "ຊົນເຫຼົ່າອື່ນຈັກເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ"

ຯລຯ "ຊົນເຫຼົ່າອື່ນຈັກມີຈິດພະຍາບາດ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ມີຈິດພະຍາບາດ"

ຯລຯ "ຊົນເຫຼົ່າອື່ນຈັກມີຄວາມເຫັນຜິດ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີຄວາມເຫັນຖືກ"

ຯລຯ "ຊົນເຫຼົ່າອື່ນຈັກມີຄວາມດຳຣິຜິດ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີຄວາມດຳຣິຖືກ"

ຯລຯ "ຊົນເຫຼົ່າອື່ນຈັກເຈລະຈາຜິດ ໃນເລື້ອງນີ້ ເຮົາທັງຫຼາຍຈັກເຈລະຈາຖືກ"

ຯລຯ "ຊົນເຫຼົ່າອື່ນຈັກມີການກະທຳຜິດ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີການກະທຳຖືກ"

ຯລຯ "ຊົນເຫຼົ່າອື່ນຈັກມີການລ້ຽງຊີບຜິດ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີການລ້ຽງຊີບຖືກ"

ຯລຯ "ຊົນເຫຼົ່າອື່ນຈັກມີຄວາມພະຍາຍາມຜິດ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີຄວາມພະຍາຍາມຖືກ"

ຯລຯ "ຊົນເຫຼົ່າອື່ນຈັກມີຄວາມຣະນຶກຜິດ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີຄວາມຣະນຶກຖືກ"

ຯລຯ "ຊົນເຫຼົ່າອື່ນຈັກມີການຕັ້ງຈິດໝັ້ນຜິດ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີການຕັ້ງຈິດໝັ້ນຖືກ"

ຯລຯ "ຊົນເຫຼົ່າອື່ນຈັກມີມິດສາຍານະ (ຄວາມຮູ້ຜິດ) ໃນເລື້ອງນີ້ ເຮົາທັງຫຼາຍຈັກມີຄວາມຮູ້ຖືກ"

ຯລຯ "ຊົນເຫຼົ່າອື່ນຈັກມີມິດສາວິມຸດຕິ (ຄວາມລຸດພົ້ນຜິດ) ໃນເລື້ອງນີ້ ເຮົາທັງຫຼາຍຈັກມີຄວາມລຸດພົ້ນຖືກ"

ຯລຯ "ຊົນເຫຼົ່າອື່ນຈັກຖືກຄວາມຫົດຫູ່ ແລະ ງ່ວມເຫງົາຄອບງຳ ໃນເລື້ອງນີ້ ເຮົາທັງຫຼາຍຈັກປາສະຈາກຄວາມຫົດຫູ່ ແລະ ງ່ວມເຫງົາ"

ຯລຯ "ຊົນເຫຼົ່າອື່ນຈັກມີຈິດຟຸ້ງຊ່ານ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີຈິດບໍ່ຟຸ້ງຊ່ານ"

ຯລຯ "ຊົນເຫຼົ່າອື່ນຈັກມີຄວາມສົງໄສ ໃນເລື້ອງນີ້ ເຮົາທັງຫຼາຍຈັກຂ້າມພົ້ນຄວາມສົງໄສ"

ຯລຯ "ຊົນເຫຼົ່າອື່ນຈັກມີຄວາມໂກດ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ມີຄວາມໂກດ"

ຯລຯ "ຊົນເຫຼົ່າອື່ນຈັກຜູກໂກດ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ຜູກໂກດ"

ຯລຯ "ຊົນເຫຼົ່າອື່ນຈັກລົບຫຼູ່ຄຸນທ່ານ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ລົບຫຼູ່ຄຸນທ່ານ"

ຯລຯ "ຊົນເຫຼົ່າອື່ນຈັກຕີສະເໝີ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ຕີສະເໝີ"

ຯລຯ "ຊົນເຫຼົ່າອື່ນຈັກມີຄວາມຣິດສະຫຍາ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ມີຄວາມຣິດສະຫຍາ"

ຯລຯ "ຊົນເຫຼົ່າອື່ນຈັກມີຄວາມຂີ້ຖີ່ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ມີຄວາມຂີ້ຖີ່"

ຯລຯ "ຊົນເຫຼົ່າອື່ນຈັກໂອ້ອວດ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ໂອ້ອວດ"

ຯລຯ "ຊົນເຫຼົ່າອື່ນຈັກມີມານຍາ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ມີມານຍາ"

ໆລໆ "ຊົນເຫຼົ່າອື່ນຈັກດື້ດ້ານ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ດື້ດ້ານ"
ໆລໆ "ຊົນເຫຼົ່າອື່ນຈັກຖືຕົວຈັດ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ຖືຕົວຈັດ"
ໆລໆ "ຊົນເຫຼົ່າອື່ນຈັກວ່າຍາກ ໃນເລື້ອງນີ້ ເຮົາທັງຫຼາຍຈັກວ່າງ່າຍ"
ໆລໆ "ຊົນເຫຼົ່າອື່ນຈັກມີມິດຊົ່ວ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີມິດດີ"
ໆລໆ "ຊົນເຫຼົ່າອື່ນຈັກຜະໝາດ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ຜະໝາດ"
ໆລໆ "ຊົນເຫຼົ່າອື່ນຈັກບໍ່ມີສັດທາ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີສັດທາ"
ໆລໆ "ຊົນເຫຼົ່າອື່ນຈັກບໍ່ມີຄວາມລະອາຍບາບ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີຄວາມລະອາຍບາບ"
ໆລໆ "ຊົນເຫຼົ່າອື່ນຈັກບໍ່ມີຄວາມຢ້ານບາບ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີຄວາມຢ້ານບາບ"
ໆລໆ "ຊົນເຫຼົ່າອື່ນຈັກມີການໄດ້ຍິນໄດ້ຟັງໜ້ອຍ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີການໄດ້ຍິນໄດ້ຟັງຫຼາຍ"
ໆລໆ "ຊົນເຫຼົ່າອື່ນຈັກຂີ້ຄ້ານ ໃນເລື້ອງນີ້ ເຮົາທັງຫຼາຍຈັກຜາຣົບຄວາມພຽນ"
ໆລໆ "ຊົນເຫຼົ່າອື່ນຈັກມີສະຕິຫຼົງລືມ ໃນເລື້ອງນີ້ ເຮົາທັງຫຼາຍຈັກມີສະຕິຕັ້ງໝັ້ນ"
ໆລໆ "ຊົນເຫຼົ່າອື່ນຈັກມີປັນຍາຊາມ ໃນເລື້ອງນີ້ ເຮົາທັງຫຼາຍຈັກສົມບູນດ້ວຍປັນຍາ"

ທ່ານທັງຫຼາຍ ຄວນທຳຄວາມຂັດເກົາກິເລດດ້ວຍຄວາມຄິດວ່າ "ຊົນເຫຼົ່າອື່ນຈັກຢຶດຕິດຖືໝັ້ນທິດຖິຂອງຕົນ ກຳຈັດຖິ້ມໄດ້ຍາກ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ຢຶດຕິດ ບໍ່ຖືໝັ້ນທິດຖິຂອງຕົນກຳຈັດຖິ້ມໄດ້ງ່າຍ"

[໗໔] ຈຸນທະ ເຮົາກ່າວວ່າ "ແມ່ນຈິດຕຸປະບາດກໍມີອຸປະກາຣະຫຼາຍໃນກຸສົນທຳທັງຫຼາຍ ບໍ່ຈຳເປັນຕ້ອງກ່າວເຖິງການກະທຳດ້ວຍກາຍແລະເວົ້າດ້ວຍວາຈາ" ເພາະສະນັ້ນ ໃນເລື້ອງນີ້ ທ່ານທັງຫຼາຍ ຄວນມີຄວາມຄິດວ່າ "ຊົນເຫຼົ່າອື່ນຈັກບຽດບຽນກັນ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ບຽດບຽນກັນ"

ໆລໆ "ຊົນເຫຼົ່າອື່ນຈັກຂ້າສັດ ໃນເລື້ອງນີ້ ເຮົາທັງຫຼາຍຈັກເວັ້ນຈາກການຂ້າສັດ" ໆລໆ ທ່ານທັງຫຼາຍຄວນມີຄວາມຄິດວ່າ "ຊົນເຫຼົ່າອື່ນຈັກຢຶດຕິດ ຖືໝັ້ນທິດຖິຂອງຕົນກຳຈັດຖິ້ມໄດ້ຍາກ ໃນເລື້ອງນີ້ ເຮົາທັງຫຼາຍຈັກບໍ່ຢຶດຕິດ ບໍ່ຖືໝັ້ນທິດຖິຂອງຕົນ ກຳຈັດຖິ້ມໄດ້ງ່າຍ"

## ທາງຫຼີກໜີຄວາມຊົ່ວ

[໗໕] ຈຸນທະ ທາງທີ່ສູງໂນນຈະເພິ່ງມີທາງທົ່ງຮາບພຽງອື່ນເພື່ອໃຊ້ເປັນທາງຫຼີກໜີ ອັນໜຶ່ງ ທ່ານ້ຳທີ່ສູງໂນນຈະເພິ່ງມີທ່ານ້ຳທົ່ງຮາບພຽງອື່ນເພື່ອໃຊ້ເປັນທາງຫຼີກໜີ ແມ່ນສັນໃດ

ຄວາມບໍ່ບຽດບຽນກໍສັນນັ້ນຄືກັນ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ບຽດບຽນ

ເຈຕະນາງົດເວັ້ນຈາກການຂ້າສັດ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ຂ້າສັດ

ເຈຕະນາງົດເວັ້ນຈາກການລັກຊັບ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ລັກຊັບ

ເຈຕະນາງົດເວັ້ນຈາກການບໍ່ປະພຶດພົມມະຈັນ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ບໍ່ປະພຶດພົມມະຈັນ

ເຈຕະນາງົດເວັ້ນຈາກການເວົ້າຕົວະ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ເວົ້າຕົວະ

ເຈຕະນາງົດເວັ້ນຈາກການເວົ້າສັບສໍ່ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ເວົ້າສັບສໍ່

ເຈຕະນາງົດເວັ້ນຈາກການເວົ້າຄໍາຫຍາບ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ເວົ້າຄໍາຫຍາບ

ເຈຕະນາງົດເວັ້ນຈາກການເວົ້າບໍ່ມີສາຣະ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ເວົ້າບໍ່ມີສາຣະ

ຄວາມບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ

ຄວາມບໍ່ພະຍາບາດ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີຈິດພະຍາບາດ

ສໍາມາທິດຖິ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີຄວາມເຫັນຜິດ[1]

ສໍາມາສັງກັບປະ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີຄວາມດໍາຣິຜິດ

ສໍາມາວາຈາ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ເຈລະຈາຜິດ

ສໍາມາກໍາມັນຕະ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີການກະທໍາຜິດ

ສໍາມາອາຊີວະ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີການລ້ຽງຊີບຜິດ

ສໍາມາວາຍາມະ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີຄວາມພະຍາຍາມຜິດ

ສໍາມາສະຕິ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີຄວາມຣະນຶກຜິດ

ສໍາມາສະມາທິ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີການຕັ້ງຈິດໝັ້ນຜິດ

ສໍາມາຍານະ (ຄວາມຮູ້ຊອບ) ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີຄວາມຮູ້ຜິດ

ສໍາມາວິມຸດຕິ (ຄວາມລຸດພົ້ນຊອບ) ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີຄວາມລຸດພົ້ນຜິດ

ຄວາມເປັນຜູ້ປາສະຈາກຄວາມຫົດຫູ່ແລະງ່ວມເຫງົາ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ຖືກຄວາມຫົດຫູ່ແລະງ່ວມເຫງົາຄອບງໍາ

ຄວາມບໍ່ຟຸ້ງຊ່ານ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີຈິດຟຸ້ງຊ່ານ

ຄວາມເປັນຜູ້ຂ້າມພົ້ນຄວາມສົງໄສ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມີຄວາມສົງໄສ

ຄວາມບໍ່ໂກດ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ມັກໂກດ

ຄວາມບໍ່ຜູກໂກດ ເປັນທາງຫຼີກໜີສໍາລັບບຸກຄົນຜູ້ຜູກໂກດ

---

໑ ເບິ່ງທຽບ ອັງ.ທະສະກະ. (ແປ) ໒໔/໑໗໔/໓໑໙

ຄວາມບໍ່ລົບຫຼູ່ຄຸນທ່ານ ເປັນທາງຫຼີກໜີສຳລັບບຸກຄົນຜູ້ລົບຫຼູ່ຄຸນທ່ານ
ຄວາມບໍ່ຕີສະເໝີ ເປັນທາງຫຼີກໜີສຳລັບບຸກຄົນຜູ້ຕີສະເໝີ
ຄວາມບໍ່ຣິດສະຫຍາ ເປັນທາງຫຼີກໜີສຳລັບບຸກຄົນຜູ້ມີຄວາມຣິດສະຫຍາ
ຄວາມບໍ່ຂີ້ຖີ່ ເປັນທາງຫຼີກໜີສຳລັບບຸກຄົນຜູ້ຂີ້ຖີ່
ຄວາມບໍ່ໂອ້ອວດ ເປັນທາງຫຼີກໜີສຳລັບບຸກຄົນຜູ້ໂອ້ອວດ
ຄວາມບໍ່ມີມານຍາ ເປັນທາງຫຼີກໜີສຳລັບບຸກຄົນຜູ້ມີມານຍາ
ຄວາມບໍ່ດື້ດ້ານ ເປັນທາງຫຼີກໜີສຳລັບບຸກຄົນຜູ້ດື້ດ້ານ
ຄວາມບໍ່ຖືຕົວໂພດ ເປັນທາງຫຼີກໜີສຳລັບບຸກຄົນຜູ້ຖືຕົວໂພດ
ຄວາມເປັນຜູ້ວ່າງ່າຍ ເປັນທາງຫຼີກໜີສຳລັບບຸກຄົນຜູ້ວ່າຍາກ
ຄວາມເປັນຜູ້ມີມິດດີ ເປັນທາງຫຼີກໜີສຳລັບບຸກຄົນຜູ້ມີມິດຊົ່ວ
ຄວາມບໍ່ຜະໝາດ ເປັນທາງຫຼີກໜີສຳລັບບຸກຄົນຜູ້ຜະໝາດ
ສັດທາ (ຄວາມເຊື່ອ) ເປັນທາງຫຼີກໜີສຳລັບບຸກຄົນຜູ້ບໍ່ມີສັດທາ
ຫິຣິ (ຄວາມລະອາຍບາບ) ເປັນທາງຫຼີກໜີສຳລັບບຸກຄົນຜູ້ບໍ່ມີຄວາມລະອາຍບາບ
ໂອດຕັບປະ (ຄວາມຢ້ານບາບ) ເປັນທາງຫຼີກໜີສຳລັບບຸກຄົນຜູ້ບໍ່ຢ້ານບາບ
ພາຫຸສັດຈະ (ຄວາມເປັນຜູ້ໄດ້ຍິນໄດ້ຟັງຫຼາຍ) ເປັນທາງຫຼີກໜີສຳລັບບຸກຄົນຜູ້ໄດ້ຍິນໄດ້ຟັງໜ້ອຍ
ການຜາຣົບຄວາມພຽນ ເປັນທາງຫຼີກໜີສຳລັບບຸກຄົນຜູ້ຂີ້ຄ້ານ
ຄວາມເປັນຜູ້ມີສະຕິຕັ້ງໝັ້ນ ເປັນທາງຫຼີກໜີສຳລັບບຸກຄົນຜູ້ມີສະຕິຫຼົງລືມ
ຄວາມສົມບູນດ້ວຍປັນຍາ ເປັນທາງຫຼີກໜີສຳລັບບຸກຄົນຜູ້ມີປັນຍາຊາມ

ຄວາມເປັນຜູ້ບໍ່ຍຶດຕິດ ບໍ່ຖືໝັ້ນທິດຖິຂອງຕົນ ແລະກຳຈັດຖິ້ມໄດ້ງ່າຍ ເປັນທາງຫຼີກໜີສຳລັບບຸກຄົນຜູ້ຍຶດຕິດ ຖືໝັ້ນທິດຖິຂອງຕົນ ແລະ ກຳຈັດຖິ້ມໄດ້ຍາກ

[໗໖] ຈຸນທະ ອະກຸສົນທຳທັງໝົດນັ້ນ ເປັນທຳນຳບຸກຄົນໄປສູ່ຄວາມເສື່ອມ (ແຕ່) ກຸສົນທຳທັງໝົດນັ້ນ ເປັນທຳນຳບຸກຄົນໄປສູ່ຄວາມຈະເລີນ ແມ່ນສັນໃດ ຄວາມບໍ່ບຽດບຽນ ກໍສັນນັ້ນຄືກັນເປັນທາງເພື່ອຄວາມຈະເລີນສຳລັບບຸກຄົນຜູ້ບຽດບຽນ

ເຈຕະນາງົດເວັ້ນຈາກການຂ້າສັດ ເປັນທາງເພື່ອຄວາມຈະເລີນສຳລັບບຸກຄົນຜູ້ຂ້າສັດ
ເຈຕະນາງົດເວັ້ນຈາກການລັກຊັບ ເປັນທາງເພື່ອຄວາມຈະເລີນສຳລັບບຸກຄົນຜູ້ລັກຊັບ

໗໑໗

ຄວາມເປັນຜູ້ບໍ່ຍຶດຕິດ ບໍ່ຖືໝັ້ນທິດຖິຂອງຕົນ ແລະກຳຈັດຖິ້ມໄດ້ງ່າຍ ເປັນທາງເພື່ອຄວາມຈະເລີນສຳລັບບຸກຄົນຜູ້ຍຶດຕິດ ຖືໝັ້ນທິດຖິຂອງຕົນ ແລະກຳຈັດຖິ້ມໄດ້ຍາກ

# ອຸບາຍເພື່ອຄວາມດັບສະນິດ

[໘໗] ຈຸນທະ ເປັນໄປບໍ່ໄດ້ເລີຍທີ່ບຸກຄົນນັ້ນຕົນເອງຈົມຢູ່ໃນຕົມເລິກ ຈັກຊ່ອຍຍົກບຸກຄົນອື່ນຜູ້ຈົມຢູ່ໃນຕົມເລິກຂຶ້ນໄດ້

ແຕ່ເປັນໄປໄດ້ທີ່ບຸກຄົນນັ້ນຕົນເອງບໍ່ຈົມຢູ່ໃນຕົມເລິກ ຈັກຊ່ອຍຍົກບຸກຄົນອື່ນຜູ້ຈົມຢູ່ໃນຕົມເລິກຂຶ້ນໄດ້

ເປັນໄປບໍ່ໄດ້ເລີຍທີ່ບຸກຄົນນັ້ນຕົນເອງບໍ່ເຝິກຕົນ ບໍ່ແນະນຳຕົນ ບໍ່ດັບສະນິດ ຈັກເຝິກສອນຜູ້ອື່ນ ແນະນຳຜູ້ອື່ນ ຊ່ອຍໃຫ້ຜູ້ອື່ນດັບສະນິດໄດ້

ແຕ່ເປັນໄປໄດ້ທີ່ບຸກຄົນນັ້ນ ຕົນເອງເຝິກຕົນ ແນະນຳຕົນ ດັບສະນິດ ຈັກເຝິກຜູ້ອື່ນ ແນະນຳ ຜູ້ອື່ນ ຊ່ອຍໃຫ້ຜູ້ອື່ນດັບສະນິດໄດ້ ແມ່ນສັນໃດ ຄວາມບໍ່ບຽດບຽນກໍສັນນັ້ນຄືກັນ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ບຽດບຽນ

ເຈຕະນາງົດເວັ້ນຈາກການຂ້າສັດ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ຂ້າສັດ

ເຈຕະນາງົດເວັ້ນຈາກການລັກຊັບ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ລັກຊັບ

ເຈຕະນາງົດເວັ້ນຈາກການບໍ່ປະພຶດພົມມະຈັນ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ບໍ່ປະພຶດພົມມະຈັນ

ເຈຕະນາງົດເວັ້ນຈາກການເວົ້າຕົວະ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ເວົ້າຕົວະ

ເຈຕະນາງົດເວັ້ນຈາກການເວົ້າສັບສໍ່ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ເວົ້າສັບສໍ່

ເຈຕະນາງົດເວັ້ນຈາກການເວົ້າຄຳຫຍາບ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ເວົ້າຄຳຫຍາບ

ເຈຕະນາງົດເວັ້ນຈາກການເວົ້າບໍ່ມີສາຣະ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ເວົ້າບໍ່ມີສາຣະ

ຄວາມບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ

ຄວາມບໍ່ພະຍາບາດ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ມີຈິດພະຍາບາດ

ສຳມາທິດຖິ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ມີຄວາມເຫັນຜິດ

ສຳມາສັງກັບປະ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ມີຄວາມດຳຣິຜິດ

ສຳມາວາຈາ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ເຈລະຈາຜິດ

ສຳມາກຳມັນຕະ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ມີການກະທຳຜິດ

ສຳມາອາຊີວະ ເປັນທາງເພື່ອຄວາມດັບສະນິດສຳລັບບຸກຄົນຜູ້ມີການລ້ຽງຊີບຜິດ

ສໍາມາວາຍາມະ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີຄວາມພະຍາຍາມຜິດ
ສໍາມາສະຕິ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີຄວາມຣະນຶກຜິດ
ສໍາມາສະມາທິ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີການຕັ້ງຈິດໝັ້ນຜິດ
ສໍາມາຍານະ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີຄວາມຮູ້ຜິດ
ສໍາມາວິມຸດຕິ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີຄວາມລຸດພົ້ນຜິດ

ຄວາມເປັນຜູ້ປາສະຈາກຄວາມທົດທູ່ແລະງ່ວມເຫງົາ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ຖືກຄວາມທົດທູ່ ແລະ ງ່ວມເຫງົາຄອບງໍາ

ຄວາມບໍ່ຟຸ້ງຊ່ານ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີຈິດຟຸ້ງຊ່ານ

ຄວາມເປັນຜູ້ຂ້າມພົ້ນຄວາມສົງໄສ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີຄວາມສົງໄສ

ຄວາມບໍ່ໂກດ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມັກໂກດ
ຄວາມບໍ່ຜູກໂກດ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ຜູກໂກດ
ຄວາມບໍ່ລົບຫຼູ່ຄຸນທ່ານ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ລົບຫຼູ່ຄຸນທ່ານ
ຄວາມບໍ່ຕີສະເໝີ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ຕີສະເໝີ
ຄວາມບໍ່ຣິດສະຫຍາ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີຄວາມຣິດສະຫຍາ
ຄວາມບໍ່ຂີ້ຖີ່ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ຂີ້ຖີ່
ຄວາມບໍ່ໂອ້ອວດ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ໂອ້ອວດ
ຄວາມບໍ່ມີມານຍາ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີມານຍາ
ຄວາມບໍ່ດື້ດ້ານ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ດື້ດ້ານ
ຄວາມບໍ່ຖືຕົວຈັດ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ຖືຕົວຈັດ
ຄວາມເປັນຜູ້ວ່າງ່າຍ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ວ່າຍາກ
ຄວາມເປັນຜູ້ມີມິດດີ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີມິດຊົ່ວ
ຄວາມບໍ່ຜະໝາດ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ຜະໝາດ
ສັທທາ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ບໍ່ມີສັດທາ
ຫິຣິ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ບໍ່ມີຄວາມລະອາຍບາບ
ໂອດຕັປປະ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ບໍ່ຢ້ານຢໍ້າບາບ
ພາຫຸສັດຈະ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ໄດ້ຍິນໄດ້ຟັງໜ້ອຍ
ການຜາຣົບຄວາມພຽນ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ກຽດຄ້ານ
ຄວາມເປັນຜູ້ມີສະຕິຕັ້ງໝັ້ນເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີສະຕິຫລົງລືມ
ຄວາມສົມບູນດ້ວຍປັນຍາ ເປັນທາງເພື່ອຄວາມດັບສະນິດສໍາລັບບຸກຄົນຜູ້ມີປັນຍາຊາມ
ຄວາມເປັນຜູ້ບໍ່ຍຶດຕິດ ບໍ່ຖືໝັ້ນທິດຖິຂອງຕົນ ແລະກໍາຈັດຖິ້ມໄດ້ງ່າຍ ເປັນທາງເພື່ອ

ຄວາມດັບສະນິດສຳລັບບຸກຄົນຜູ້ຍຶດຕິດ ຖືໝັ້ນທິດຖິຂອງຕົນ ແລະກຳຈັດຖິ້ມໄດ້ຍາກ

[໘໘] ຈຸນທະ ເຮົາໄດ້ສະແດງເຫດແຫ່ງທຳເປັນເຄື່ອງຂັດເກົາກິເລດ ເຫດແຫ່ງ ຈິດຕຸປະບາດ ເຫດແຫ່ງການຫຼີກໜີ ເຫດແຫ່ງການໄປສູ່ຄວາມຈະເລີນ (ແລະ) ເຫດແຫ່ງຄວາມດັບສະນິດໄວ້ແລ້ວດ້ວຍປະການຢ່າງນີ້ ເຮົາຜູ້ສະແຫວງຫາປະໂຫຍດເກື້ອກູນ ເອື້ອເຟື້ອ ອິດູ ອະນຸເຄາະສາວົກທັງຫຼາຍ ໄດ້ເຮັດກິດທີ່ຄວນເຮັດແກ່ທ່ານທັງຫຼາຍແລ້ວ

ຈຸນທະ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງພິນິດຢູ່ເທີ້ນ ຢ່າຜະໝາດ ຢ່າໄດ້ເດືອດຮ້ອນໃນພາຍຫຼັງເລີຍ ນີ້ເປັນຄຳບອກສອນຂອງເຮົາສຳລັບທ່ານທັງຫຼາຍ"

ເມື່ອພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະມະຫາຈຸນທະມີໃຈຍິນດີຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

ພຣະຜູ້ມີພຣະພາກເຈົ້າຕັດບົດ ໔໔ ບົດ ຊົງສະແດງສິນທີ ໕ ພຣະສູດນີ້ຊື່ ສັນເລຂະສູດ ອັນເລີກເຊິ່ງປຽບດ້ວຍສາຄອນ

**ສັນເລຂະສູດທີ ໘ ຈົບ**

# ໙. ສຳມາທິດຖິສູດ

## ວ່າດ້ວຍຄວາມເຫັນຖືກ

[໘໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ທ່ານພຣະສາຣີບຸດ ຮຽກພິກຂຸທັງຫຼາຍດ້ວຍຄຳກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ" ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ຂຶ້ນ ວ່າ

"ທ່ານຜູ້ມີອາຍຸທັງຫຼາຍ ມີຄົນກ່າວກັນວ່າ "ສຳມາທິດຖິ[໑] ສຳມາທິດຖິ" ດ້ວຍເຫດອັນໃດ

---

໑ **ສຳມາທິດຖິ** ມີ ໒ ຢ່າງ ຄື (໑) ໂລກິຍະສຳມາທິດຖິ ໝາຍເຖິງກຳມັດສະກະຕາຍານ (ຍານຢັ່ງຮູ້ວ່າສັດມີກຳ ເປັນຂອງຕົນ) ແລະສັດຈານຸໂລມິກະຍານ (ຍານຢັ່ງຮູ້ໂດຍສົມຄວນແກ່ການກຳນົດຮູ້ອະຣິຍະສັດ) (໒) ໂລກຸດຕະຣະສຳມາທິດຖິ

ແດ່? ພຣະອະຣິຍະສາວົກຈຶ່ງຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້"

ພິກຂຸເຫຼົ່ານັ້ນກ່າວວ່າ "ທ່ານຜູ້ມີອາຍຸ ພວກຂ້າພະເຈົ້າມາຈາກບ່ອນໄກ ກໍເພື່ອຈະຮູ້ທົ່ວເຖິງ ເນື້ອຄວາມແຫ່ງພາສິດນັ້ນ ໃນສຳນັກຂອງທ່ານພຣະສາຣີບຸດ ພວກຂ້າພະເຈົ້າຂໍໂອກາດ ຂໍທ່ານພຣະສາຣີບຸດ ຈົ່ງອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ່ມແຈ້ງເທີ້ນ ພິກຂຸທັງຫຼາຍ ໄດ້ຟັງຄຳອະທິບາຍຂອງທ່ານແລ້ວຈັກຊົງຈຳໄວ້ໄດ້"

ທ່ານພຣະສາຣີບຸດຈຶ່ງກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້າພະເຈົ້າຈັກກ່າວ"

ເມື່ອພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດໄດ້ກ່າວເລື້ອງນີ້ ວ່າ

## ເລື້ອງອະກຸສົນແລະກຸສົນ

"ທ່ານຜູ້ມີອາຍຸທັງຫຼາຍ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອະກຸສົນ ແລະ ຮາກເຫງົ້າແຫ່ງອະກຸສົນ ຮູ້ແຈ້ງກຸສົນ ແລະ ຮາກເຫງົ້າແຫ່ງກຸສົນ ເມື່ອນັ້ນ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກ ກໍຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳມາສູ່ພຣະສັດທຳນີ້

ອະກຸສົນ ເປັນແນວໃດ? ຮາກເຫງົ້າແຫ່ງອະກຸສົນ ເປັນແນວໃດ? ກຸສົນ ເປັນແນວໃດ? ຮາກເຫງົ້າແຫ່ງກຸສົນ ເປັນແນວໃດ?

ອະກຸສົນ ເປັນແນວໃດ? ຄື

| | |
|---|---|
| ການຂ້າສັດ | ເປັນອະກຸສົນ |
| ການລັກຊັບ | ເປັນອະກຸສົນ |
| ການປະພຶດຜິດໃນກາມ | ເປັນອະກຸສົນ |
| ການເວົ້າຕົວະ | ເປັນອະກຸສົນ |
| ການເວົ້າສັບສໍ່ | ເປັນອະກຸສົນ |
| ການເວົ້າຄຳຫຍາບ | ເປັນອະກຸສົນ |
| ການເວົ້າບໍ່ມີສາຣະ | ເປັນອະກຸສົນ |

ໝາຍເຖິງປັນຍາທີ່ປະກອບດ້ວຍອະຣິຍະມັກ ແລະອະຣິຍະຜົນ ໃນທີ່ນີ້ໝາຍເຖິງໂລກຸດຕະຣະສຳມາທິດຖິ (ມ.ມູ.ອ. ໑/໘໗/໔໐໗)

ການເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ເປັນອະກຸສົນ
ການຄິດປອງຮ້າຍຜູ້ອື່ນ ເປັນອະກຸສົນ
ມິດສາທິດຖິ ເປັນອະກຸສົນ
ນີ້ຮຽກວ່າ ອະກຸສົນ

ຮາກເຫງົ້າແຫ່ງອະກຸສົນ ເປັນແນວໃດ? ຄື

ໂລພະ (ຄວາມໂລບ) ເປັນຮາກເຫງົ້າແຫ່ງອະກຸສົນ
ໂທສະ (ຄວາມຄິດປະທຸດສະຮ້າຍ) ເປັນຮາກເຫງົ້າແຫ່ງອະກຸສົນ
ໂມຫະ (ຄວາມຫຼົງ) ເປັນຮາກເຫງົ້າແຫ່ງອະກຸສົນ

ນີ້ຮຽກວ່າ ຮາກເຫງົ້າແຫ່ງອະກຸສົນ

ກຸສົນ ເປັນແນວໃດ? ຄື
ເຈຕະນາງົດເວັ້ນຈາກການຂ້າສັດ ເປັນກຸສົນ
ເຈຕະນາງົດເວັ້ນຈາກການລັກຊັບ ເປັນກຸສົນ
ເຈຕະນາງົດເວັ້ນຈາກການປະພຶດຜິດໃນກາມ ເປັນກຸສົນ
ເຈຕະນາງົດເວັ້ນຈາກການເວົ້າຕົວະ ເປັນກຸສົນ
ເຈຕະນາງົດເວັ້ນຈາກການເວົ້າສັບສໍ່ ເປັນກຸສົນ
ເຈຕະນາງົດເວັ້ນຈາກການເວົ້າຄຳຫຍາບ ເປັນກຸສົນ
ເຈຕະນາງົດເວັ້ນຈາກການເວົ້າບໍ່ມີສາຣະ ເປັນກຸສົນ
ການບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ເປັນກຸສົນ
ການບໍ່ປອງຮ້າຍຜູ້ອື່ນ ເປັນກຸສົນ
ສຳມາທິດຖິ ເປັນກຸສົນ
ນີ້ຮຽກວ່າ ກຸສົນ

ຮາກເຫງົ້າແຫ່ງກຸສົນ ເປັນແນວໃດ? ຄື

ອະໂລພະ (ຄວາມບໍ່ໂລບ) ເປັນຮາກເຫງົ້າແຫ່ງກຸສົນ
ອະໂທດະ (ຄວາມບໍ່ຄິດປະທຸດສະຮ້າຍ) ເປັນຮາກເຫງົ້າແຫ່ງກຸສົນ
ອະໂມຫະ (ຄວາມບໍ່ຫຼົງ) ເປັນຮາກເຫງົ້າແຫ່ງກຸສົນ

ນີ້ຮຽກວ່າ ຮາກເຫງົ້າແຫ່ງກຸສົນ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອະກຸສົນ ແລະ ຮາກເຫງົ້າແຫ່ງອະກຸສົນຢ່າງນີ້ ຮູ້

ແຈ້ງກຸສົນ ແລະ ຮາກເຫງົ້າແຫ່ງກຸສົນຢ່າງນີ້ ເມື່ອນັ້ນ ທ່ານລະຣາຄານຸໄສ (ກິເລດທີ່ນອນເນື່ອງຄືຣາຄະ) ບັນເທົາປະຕິຄານຸໄສ (ກິເລດທີ່ນອນເນື່ອງຄືປະຕິຄະ) ຖອນທິດຖານຸໄສ (ກິເລດທີ່ນອນເນື່ອງຄືທິດຖິ) ແລະ ມານານຸໄສ (ກິເລດທີ່ນອນເນື່ອງຄືມານະ) ທີ່ວ່າ "ເປັນເຮົາ" ໂດຍປະການທັງປວງ ລະອະວິດຊາໄດ້ແລ້ວ ເຮັດວິດຊາໃຫ້ເກີດຂຶ້ນ ແລ້ວເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ໃນປັດຈຸບັນນີ້ເອງ ດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າ ມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້"

## ເລື້ອງອາຫານ

[໙໐] ພິກຂຸເຫຼົ່ານັ້ນ ຊື່ນຊົມຍິນດີພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ການອະທິບາຍແມ່ນຢ່າງອື່ນເປັນເຫດຊີ້ບອກວ່າ ພຣະອະຣິຍະສາວົກຊື່ວ່າ ມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາອັນມາສູ່ພຣະສັດທໍານີ້ ມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອາຫານ ເຫດເກີດແຫ່ງອາຫານ ຄວາມດັບແຫ່ງອາຫານ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາຫານ

ເມື່ອນັ້ນ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າ ມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້

ອາຫານ ເປັນແນວໃດ? ເຫດເກີດແຫ່ງອາຫານ ເປັນແນວໃດ? ຄວາມດັບແຫ່ງອາຫານເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາຫານ ເປັນແນວໃດ?

ຄື ອາຫານ ໔ ຊະນິດນີ້ ຍ່ອມມີເພື່ອຄວາມດໍາລົງຢູ່ຂອງໝູ່ສັດຜູ້ເກີດແລ້ວ ຫຼື ເພື່ອອະນຸເຄາະເຫຼົ່າສັດຜູ້ສະແຫວງຫາທີ່ເກີດ

ອາຫານ ໔ ຊະນິດ ມີອັນໃດແດ່? ຄື

໑. ກະວະລິງກາຣາຫານ (ອາຫານຄືຄໍາເຂົ້າ) ຫຍາບແດ່ ລະອຽດແດ່
໒. ຜັດສາຫານ (ອາຫານຄືການສໍາຜັດ)
໓. ມະໂນສັນເຈຕະນາຫານ (ອາຫານຄືຄວາມຈົງໃຈ)
໔. ວິນຍານາຫານ (ອາຫານຄືວິນຍານ)

ຍ້ອນຕັນຫາເກີດ ເຫດເກີດແຫ່ງອາຫານຈຶ່ງມີ
ຍ້ອນຕັນຫາດັບ ຄວາມດັບແຫ່ງອາຫານຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ ໒. ສຳມາສັງກັບປະ
໓. ສຳມາວາຈາ ໔. ສຳມາກຳມັນຕະ
໕. ສຳມາອາຊີວະ ໖. ສຳມາວາຍາມະ
໗. ສຳມາສະຕິ ໘. ສຳມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາຫານໄດ້

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອາຫານ ເຫດເກີດແຫ່ງອາຫານ ຄວາມດັບແຫ່ງອາຫານ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາຫານຢ່າງນີ້ ເມື່ອນັ້ນ ທ່ານລະຣາຄານຸໄສ ບັນເທົາປະຕິຄານຸໄສ ຖອນທິດຖານຸໄສ ແລະ ມານານຸໄສທີ່ວ່າ "ເປັນເຮົາ" ໂດຍປະການທັງປວງ ລະອະວິດຊາໄດ້ແລ້ວ ເຮັດວິດຊາໃຫ້ເກີດຂຶ້ນ ແລ້ວເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ໃນປັດຈຸບັນນີ້ເອງ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້"

## ເລື້ອງສັດຈະ

[໙໑] ພິກຂຸເຫຼົ່ານັ້ນຊື່ນຊົມ ຍິນດີພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ອະທິບາຍແມ່ນຢ່າງອື່ນອີກ ອັນເປັນເຫດຊີ້ບອກໄດ້ວ່າ ພຣະອະຣິຍະສາວົກຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ ໃນທຳມາສູ່ພຣະສັດທຳນີ້ ຍັງມີອີກຢູ່ຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງທຸກ (ສະພາວະທີ່ທົນໄດ້ຍາກ) ທຸກຂະສະມຸໄທ (ເຫດເກີດແຫ່ງທຸກ) ທຸກຂະນິໂຣທະ (ຄວາມດັບທຸກ) ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ) ເມື່ອນັ້ນ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳມາສູ່ພຣະສັດທຳນີ້"

ທຸກ ເປັນແນວໃດ? ທຸກຂະສະມຸໄທເປັນແນວໃດ? ທຸກຂະນິໂຣທະ ເປັນແນວໃດ? ທຸກຂະນິໂຣທະຄາມິນີປະຕິປະທາ ເປັນແນວໃດ?

ທຸກ ເປັນແນວໃດ?

ຄື ຊາດເປັນທຸກ ຊະຣາເປັນທຸກ ມໍລະນະເປັນທຸກ ໂສກະ ປະຣິເທວະ ທຸກ ໂທມະນັດ

ອຸປາຍາດເປັນທຸກ ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ ຄວາມພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ວ່າໂດຍຫຍໍ້ ອຸປາທານຂັນ໌ ໕ ເປັນທຸກ ນີ້ຮຽກວ່າ ທຸກ

ທຸກຂະສະມຸໄທເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ໄດ້ແກ່ ກາມຕັນຫາ (ຄວາມທະຍານຢາກໃນກາມ) ພະວະຕັນຫາ (ຄວາມທະຍານຢາກເປັນນັ້ນເປັນນີ້) ວິພະວະຕັນຫາ (ຄວາມທະຍານຢາກບໍ່ເປັນນັ້ນເປັນນີ້) ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກຂະນິໂຣທະ ເປັນແນວໃດ?

ຄື ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະຫຼະ ຄວາມສະຫຼະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມີນີປະຕິປະທາ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ທຸກຂະນິໂຣທະຄາມີນີປະຕິປະທາ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງທຸກ ທຸກຂະສະມຸໄທທຸກຂະນິໂຣທະ ແລະ ທຸກຂະນິໂຣທະຄາມີນີປະຕິປະທາແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສ ບັນເທົາປະຕິຄານຸໄສ ຖອນທິດຖານຸໄສແລະມານານຸໄສທີ່ວ່າ "ເປັນເຮົາ" ໂດຍປະການທັງປວງ ລະອະວິດຊາໄດ້ແລ້ວ ເຮັດວິດຊາໃຫ້ເກີດຂຶ້ນ ແລ້ວເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ໃນປັດຈຸບັນນີ້ເອງ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳມາສູ່ພຣະສັດທຳນີ້"

## ເລື້ອງຊະຣາແລະມໍລະນະ

[໗໘] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີ ພາສິດຂອງທ່ານພຣະສາຣີບຸດ ວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ການອະທິບາຍແນ່ນຢ່າງອື່ນອີກ ອັນເປັນເຫດຊີ້ບອກ ວ່າ ພຣະອະຣິຍະສາວົກຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສ

ອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງຊະຣາແລະມໍລະນະ ເຫດເກີດແຫ່ງຊະຣາແລະມໍລະນະ ຄວາມດັບແຫ່ງຊະຣາແລະມໍລະນະ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ເມື່ອນັ້ນ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້

ຊະຣາແລະມໍລະນະ ເປັນແນວໃດ? ເຫດເກີດແຫ່ງຊະຣາແລະມໍລະນະ ເປັນແນວໃດ? ຄວາມດັບແຫ່ງຊະຣາແລະມໍລະນະ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ ເປັນແນວໃດ?

ຊະຣາ ເປັນແນວໃດ?

ຄື ຄວາມແກ່ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍານ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

ມໍລະນະ ເປັນແນວໃດ?

ຄື ຄວາມຈຸຕິ ຄວາມເຄື່ອນໄປ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄືຄວາມຕາຍ ການທຳກາລະ ຄວາມແຕກແຫ່ງຂັນ ຄວາມທອດຖິ້ມຮ່າງກາຍ ຄວາມຂາດສູນແຫ່ງຊີວິຕິນຊີຂອງເຫຼົ່າສັດນັ້ນ ໆ ຈາກໝູ່ສັດນັ້ນ ໆ ນີ້ຮຽກວ່າ ມໍລະນະ

ຊະຣາແລະມໍລະນະດັ່ງກ່າວມາແລ້ວ ນີ້ຮຽກວ່າ ຊະຣາແລະມໍລະນະ
ຍ້ອນຊາດເກີດ ເຫດເກີດແຫ່ງຊະຣາແລະມໍລະນະຈຶ່ງມີ
ຍ້ອນຊາດດັບ ຄວາມດັບແຫ່ງຊະຣາແລະມໍລະນະຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງຊະຣາແລະມໍລະນະ ເຫດເກີດແຫ່ງຊະຣາແລະມໍລະນະ ຄວາມດັບແຫ່ງຊະຣາແລະມໍລະນະ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຊະຣາແລະ

ນໍລະນະຢ່າງນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້"

## ເລື້ອງຊາດ

[໙໓] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີ ພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງຊາດ ເຫດເກີດແຫ່ງຊາດ ຄວາມດັບແຫ່ງຊາດ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຊາດ ເມື່ອນັ້ນ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສ ອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້

ຊາດ ເປັນແນວໃດ? ເຫດເກີດແຫ່ງຊາດ ເປັນແນວໃດ? ຄວາມດັບແຫ່ງຊາດ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຊາດ ເປັນແນວໃດ?

ຄວາມເກີດ ຄວາມເກີດພ້ອມ ຄວາມຢັ່ງລົງ ຄວາມບັງເກີດ ຄວາມບັງເກີດສະເພາະ ຄວາມຜາກົດແຫ່ງຂັນ ຄວາມໄດ້ອາຍະຕະນະໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າຊາດ

ຍ້ອນພົບເກີດ ເຫດເກີດແຫ່ງຊາດຈຶ່ງມີ
ຍ້ອນພົບດັບ ຄວາມດັບແຫ່ງຊາດຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຊາດ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງຊາດ ເຫດເກີດແຫ່ງຊາດ ຄວາມດັບແຫ່ງຊາດ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຊາດຢ່າງນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີ ສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້"

## ເລື້ອງພົບ

[໗໔] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງພົບ ເຫດເກີດແຫ່ງພົບ ຄວາມດັບແຫ່ງພົບ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງພົບ ເມື່ອນັ້ນ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າ ມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສ ອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້

ພົບ ເປັນແນວໃດ? ເຫດເກີດແຫ່ງພົບ ເປັນແນວໃດ? ຄວາມດັບແຫ່ງພົບ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງພົບ ເປັນແນວໃດ?

ພົບ ໓ ເຫຼົ່ານີ້ ຄື

໑. ກາມະພົບ (ພົບທີ່ເປັນກາມາວະຈອນ)
໒. ຣູບພົບ (ພົບທີ່ເປັນຣູປາວະຈອນ)
໓. ອະຣູບພົບ (ພົບທີ່ເປັນອະຣູປະວະຈອນ)

ຍ້ອນອຸປາທານເກີດ ເຫດເກີດແຫ່ງພົບຈຶ່ງມີ
ຍ້ອນອຸປາທານດັບ ຄວາມດັບແຫ່ງພົບຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງພົບ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງພົບ ເຫດເກີດແຫ່ງພົບ ຄວາມດັບແຫ່ງພົບ ແລະຂໍ້ປະຕິບັດ ໃຫ້ເຖິງຄວາມດັບແຫ່ງພົບແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້"

## ເລື້ອງອຸປາທານ

[໗໕] ພິກຂຸເຫຼົ່ານັ້ນຊື່ນຊົມຍິນດີພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ"

ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອຸປາທານ ເຫດເກີດແຫ່ງອຸປາທານ ຄວາມດັບແຫ່ງອຸປາທານ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອຸປາທານ ເມື່ອນັ້ນ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້

ອຸປາທານ ເປັນແນວໃດ? ເຫດເກີດແຫ່ງອຸປາທານ ເປັນແນວໃດ? ຄວາມດັບແຫ່ງອຸປາທານ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອຸປາທານ ເປັນແນວໃດ?

ອຸປາທານ ໔ ປະການນີ້ ຄື

໑. ກາມຸປາທານ (ຄວາມຍຶດໝັ້ນໃນກາມ)
໒. ທິດຖຸປາທານ (ຄວາມຍຶດໝັ້ນໃນທິດຖິ)
໓. ສີລັບພະຕຸປາທານ (ຄວາມຍຶດໝັ້ນໃນສິນແລະຂໍ້ວັດປະຕິບັດ)
໔. ອັດຕະວາທຸປາທານ (ຄວາມຍຶດໝັ້ນໃນວາທະວ່າມີອັດຕາ)

ຍ້ອນຕັນຫາເກີດ ເຫດເກີດແຫ່ງອຸປາທານຈຶ່ງມີ
ຍ້ອນຕັນຫາດັບ ຄວາມດັບແຫ່ງອຸປາທານຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອຸປາທານ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອຸປາທານ ເຫດເກີດແຫ່ງອຸປາທານ ຄວາມດັບແຫ່ງອຸປາທານ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອຸປາທານແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ ໃນທໍາມາສູ່ພຣະສັດທໍານີ້"

## ເລື້ອງຕັນຫາ

[໑໓] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີ ພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງຕັນຫາ ເຫດເກີດແຫ່ງຕັນຫາ ຄວາມດັບແຫ່ງຕັນຫາ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຕັນຫາ ເມື່ອນັ້ນ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້

ຕັນຫາ ເປັນແນວໃດ? ເຫດເກີດແຫ່ງຕັນຫາ ເປັນແນວໃດ? ຄວາມດັບແຫ່ງຕັນຫາ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຕັນຫາ ເປັນແນວໃດ?

ຕັນຫາ ໖ ປະການນີ້ ຄື

໑. ຮູປະຕັນຫາ (ຄວາມທະຍານຢາກໃນຮູບ)
໒. ສັດທະຕັນຫາ (ຄວາມທະຍານຢາກໃນສຽງ)
໓. ຄັນທະຕັນຫາ (ຄວາມທະຍານຢາກໃນກິ່ນ)
໔. ຣະສະຕັນຫາ (ຄວາມທະຍານຢາກໃນຣົດ)
໕. ໂຜດທັບພະຕັນຫາ (ຄວາມທະຍານຢາກໃນໂຜດຖັບພະ)
໖. ທຳມະຕັນຫາ (ຄວາມທະຍານຢາກໃນທຳມາຣົມ)

ຍ້ອນເວທະນາເກີດ ເຫດເກີດແຫ່ງຕັນຫາຈຶ່ງມີ
ຍ້ອນເວທະນາດັບ ຄວາມດັບແຫ່ງຕັນຫາຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຕັນຫາ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງຕັນຫາ ເຫດເກີດແຫ່ງຕັນຫາ ຄວາມດັບແຫ່ງຕັນຫາ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຕັນຫາແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍ ປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້"

## ເລື້ອງເວທະນາ

[໙໗] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີ ພາສິດຂອງທ່ານພຣະສາຣີບຸດ ວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງເວທະນາ ເຫດເກີດແຫ່ງເວທະນາ ຄວາມດັບແຫ່ງເວທະນາ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງເວທະນາ ເມື່ອນັ້ນ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍ່ຊື່ວ່າມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້

ເວທະນາ ເປັນແນວໃດ? ເຫດເກີດແຫ່ງເວທະນາ ເປັນແນວໃດ? ຄວາມດັບແຫ່ງເວທະນາ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງເວທະນາ ເປັນແນວໃດ?

ເວທະນາ ໖ ປະການນີ້ ຄື

໑. ຈັກຂຸສໍາຜັດສະຊາເວທະນາ (ເວທະນາທີ່ເກີດຈາກສໍາຜັດທາງຕາ)
໒. ໂສຕະສໍາຜັດສະຊາເວທະນາ (ເວທະນາທີ່ເກີດຈາກສໍາຜັດທາງຫູ)
໓. ຄານະສໍາຜັດສະຊາເວທະນາ (ເວທະນາທີ່ເກີດຈາກສໍາຜັດທາງດັງ)
໔. ຊິວຫາສໍາຜັດສະຊາເວທະນາ (ເວທະນາທີ່ເກີດຈາກສໍາຜັດທາງລີ້ນ)
໕. ກາຍະສໍາຜັດສະຊາເວທະນາ (ເວທະນາທີ່ເກີດຈາກສໍາຜັດທາງກາຍ)
໖. ມະໂນສໍາຜັດສະຊາເວທະນາ (ເວທະນາທີ່ເກີດຈາກສໍາຜັດທາງໃຈ)

ຍ້ອນຜັດສະເກີດ ເຫດເກີດແຫ່ງເວທະນາຈຶ່ງມີ
ຍ້ອນຜັດສະດັບ ຄວາມດັບແຫ່ງເວທະນາຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງເວທະນາ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງເວທະນາ ເຫດເກີດແຫ່ງເວທະນາ ຄວາມດັບແຫ່ງເວທະນາ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງເວທະນາແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍ ປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທີ່ນີ້

ພຣະອະຣິຍະສາວົກກໍ່ຊື່ວ່າ ມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້"

## ເລື້ອງຜັດສະ

[໗໘] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີ ພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງຜັດສະ ເຫດເກີດແຫ່ງຜັດສະ ຄວາມດັບແຫ່ງຜັດສະ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຜັດສະ ເມື່ອນັ້ນ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິສາວົກກໍ່ຊື່ວ່າ ມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້

ຜັດສະ ເປັນແນວໃດ? ເຫດເກີດແຫ່ງຜັດສະ ເປັນແນວໃດ? ຄວາມດັບແຫ່ງຜັດສະ ເປັນແນວໃດ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຜັດສະ ເປັນແນວໃດ?

ຜັດສະ ໖ ປະການນີ້ ຄື

໑. ຈັກຂຸສຳຜັດ (ສຳຜັດທາງຕາ)
໒. ໂສຕະສຳຜັດ (ສຳຜັດທາງຫູ)
໓. ຄານະສຳຜັດ (ສຳຜັດທາງດັງ)
໔. ຊິວຫາສຳຜັດ (ສຳຜັດທາງລີ້ນ)
໕. ກາຍະສຳຜັດ (ສຳຜັດທາງກາຍ)
໖. ມະໂນສຳຜັດ (ສຳຜັດທາງໃຈ)

ຍ້ອນອາຍະຕະນະ ໖ ເກີດ ເຫດເກີດແຫ່ງຜັດສະຈຶ່ງມີ
ຍ້ອນອາຍະຕະນະ ໖ ດັບ ຄວາມດັບແຫ່ງຜັດສະຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ ฯລฯ ໘. ສຳມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຜັດສະ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງຜັດສະ ເຫດເກີດແຫ່ງຜັດສະ ຄວາມດັບແຫ່ງຜັດສະ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງຜັດສະແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ฯລฯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກ ກໍ່ຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້"

## ເລື້ອງອາຍະຕະນະ

[໖໙] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີ ພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ฯລฯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອາຍະຕະນະ ໖ ປະການ ເຫດເກີດແຫ່ງອາຍະຕະນະ ໖ ປະການ ຄວາມດັບແຫ່ງອາຍະຕະນະ ໖ ປະການແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາຍະຕະນະ ໖ ເມື່ອນັ້ນ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ ໃນທຳມາສູ່ພຣະສັດທຳນີ້

ອາຍະຕະນະ ໖ ປະການ ເປັນແນວໃດ? ເຫດເກີດແຫ່ງອາຍະຕະນະ ໖ ປະການ ເປັນແນວໃດ? ຄວາມດັບແຫ່ງອາຍະຕະນະ ໖ ປະການ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາຍະຕະນະ ໖ ປະການ ເປັນແນວໃດ?

ອາຍະຕະນະ ໖ ປະການນີ້ ຄື

໑. ຈັກຂວາຍະຕະນະ (ອາຍະຕະນະຄືຕາ)
໒. ໂສຕາຍະຕະນະ (ອາຍະຕະນະຄືຫູ)
໓. ຄານາຍະຕະນະ (ອາຍະຕະນະຄືດັງ)
໔. ຊິວຫາຍະຕະນະ (ອາຍະຕະນະຄືລີ້ນ)
໕. ກາຍາຍະຕະນະ (ອາຍະຕະນະຄືກາຍ)
໖. ມະນາຍະຕະນະ (ອາຍະຕະນະຄືໃຈ)

ຍ້ອນນາມຮູບເກີດ ເຫດເກີດແຫ່ງອາຍະຕະນະ ໖ ປະການຈຶ່ງມີ
ຍ້ອນນາມຮູບດັບ ຄວາມດັບແຫ່ງອາຍະຕະນະ ໖ ປະການຈຶ່ງມີ

ອະຣິຍະມັກມີອົງ ๘ ໄດ້ແກ່

໑. ສຳມາທິດຖິ ຯລຯ ๘. ສຳມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາຍະຕະນະ ໖ ປະການ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອາຍະຕະນະ ໖ ປະການ ເຫດເກີດແຫ່ງອາຍະຕະນະ ໖ ປະການ ຄວາມດັບແຫ່ງອາຍະຕະນະ ໖ ປະການ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາຍະຕະນະ ໖ ປະການແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທີ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້"

## ເລື້ອງນາມຮູບ

[໑໐໐] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີ ພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງນາມຮູບ ເຫດເກີດແຫ່ງນາມຮູບ ຄວາມດັບແຫ່ງນາມຮູບ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງນາມຮູບ ເມື່ອນັ້ນ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້

ນາມຮູບ ເປັນແນວໃດ? ເຫດເກີດແຫ່ງນາມຮູບ ເປັນແນວໃດ? ຄວາມດັບແຫ່ງນາມຮູບ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງນາມຮູບ ເປັນແນວໃດ?

ເວທະນາ ສັນຍາ ເຈຕະນາ ຜັດສະ ມະນະສິການ ນີ້ຮຽກວ່າ ນາມ ມະຫາພູຕະຮູບ ໔ (ໄດ້ແກ່ ດິນ ນໍ້າ ລົມ ໄຟ) ແລະ ຮູບທີ່ອາໄສມະຫາພູຕະຮູບ ໔ (ອຸປາທາຍະຮູບ ໒໔) ນີ້ຮຽກວ່າ ຮູບ ນາມແລະຮູບດັ່ງກ່າວນີ້ ຮຽກວ່າ ນາມຮູບ

ຍ້ອນວິນຍານເກີດ ເຫດເກີດແຫ່ງນາມຮູບຈຶ່ງມີ
ຍ້ອນວິນຍານດັບ ຄວາມດັບແຫ່ງນາມຮູບຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງນາມຮູບ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງນາມຮູບ ເຫດເກີດແຫ່ງນາມຮູບ ຄວາມດັບແຫ່ງນາມຮູບ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງນາມຮູບແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້"

## ເລື້ອງວິນຍານ

[໑໐໑] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີ ພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງວິນຍານ ເຫດເກີດແຫ່ງວິນຍານ ຄວາມດັບແຫ່ງວິນຍານ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງວິນຍານ ເມື່ອນັ້ນ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້

ວິນຍານ ເປັນແນວໃດ? ເຫດເກີດແຫ່ງວິນຍານ ເປັນແນວໃດ? ຄວາມດັບແຫ່ງວິນຍານ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງວິນຍານ ເປັນແນວໃດ?

ວິນຍານ ໖ ປະການນີ້ ຄື

໑. ຈັກຂຸວິນຍານ (ຄວາມຮູ້ແຈ້ງອາລົມທາງຕາ)
໒. ໂສຕະວິນຍານ (ຄວາມຮູ້ແຈ້ງອາລົມທາງຫູ)
໓. ຄານະວິນຍານ (ຄວາມຮູ້ແຈ້ງອາລົມທາງດັງ)
໔. ຊິວຫາວິນຍານ (ຄວາມຮູ້ແຈ້ງອາລົມທາງລີ້ນ)
໕. ກາຍະວິນຍານ (ຄວາມຮູ້ແຈ້ງອາລົມທາງກາຍ)
໖. ມະໂນວິນຍານ (ຄວາມຮູ້ແຈ້ງອາລົມທາງໃຈ)

ຍ້ອນສັງຂານເກີດ ເຫດເກີດແຫ່ງວິນຍານຈຶ່ງມີ
ຍ້ອນສັງຂານດັບ ຄວາມດັບແຫ່ງວິນຍານຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງວິນຍານ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງວິນຍານ ເຫດເກີດແຫ່ງວິນຍານ ຄວາມດັບແຫ່ງວິນຍານ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງວິນຍານ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້"

## ເລື້ອງສັງຂານ

[໑໐໔] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງສັງຂານ ເຫດເກີດແຫ່ງສັງຂານ ຄວາມດັບແຫ່ງສັງຂານ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງສັງຂານ ເມື່ອນັ້ນ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້

ສັງຂານ ເປັນແນວໃດ? ເຫດເກີດແຫ່ງສັງຂານ ເປັນແນວໃດ? ຄວາມດັບແຫ່ງສັງຂານ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງສັງຂານ ເປັນແນວໃດ?

ສັງຂານ ໓ ປະການນີ້ ຄື

໑. ກາຍະສັງຂານ (ສະພາບທີ່ປຸງແຕ່ງກາຍ)
໒. ວະຈີສັງຂານ (ສະພາບທີ່ປຸງແຕ່ງວາຈາ)
໓. ຈິດຕະສັງຂານ (ສະພາບທີ່ປຸງແຕ່ງໃຈ)

ຍ້ອນອະວິດຊາເກີດ ເຫດເກີດແຫ່ງສັງຂານຈຶ່ງມີ
ຍ້ອນອະວິດຊາດັບ ຄວາມດັບແຫ່ງສັງຂານຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງສັງຂານ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງສັງຂານ ເຫດເກີດແຫ່ງສັງຂານ ຄວາມດັບແຫ່ງສັງຂານ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງສັງຂານແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້"

## ເລື້ອງອະວິດຊາ

[໑໐໓] ພິກຂຸເຫຼົ່ານັ້ນຊື່ນຊົມຍິນດີພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ຯລຯ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອະວິດຊາ ເຫດເກີດແຫ່ງອະວິດຊາ ຄວາມດັບແຫ່ງອະວິດຊາ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອະວິດຊາ

ເມື່ອນັ້ນ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້

ອະວິດຊາ ເປັນແນວໃດ? ເຫດເກີດແຫ່ງອະວິດຊາ ເປັນແນວໃດ? ຄວາມດັບແຫ່ງອະວິດຊາ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອະວິດຊາ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ເຫດເກີດແຫ່ງທຸກ ຄວາມດັບແຫ່ງທຸກ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງທຸກ ນີ້ຮຽກວ່າ ອະວິດຊາ

ຍ້ອນອາສະວະເກີດ ເຫດເກີດແຫ່ງອະວິດຊາຈຶ່ງມີ
ຍ້ອນອາສະວະດັບ ຄວາມດັບແຫ່ງອະວິດຊາຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອະວິດຊາ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອະວິດຊາ ເຫດເກີດແຫ່ງອະວິດຊາ ຄວາມດັບແຫ່ງອະວິດຊາ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອະວິດຊາແນວນີ້ ເມື່ອນັ້ນ ທ່ານລະຣາຄານຸໄສໂດຍປະການທັງປວງ ຯລຯ ເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້"

## ເລື້ອງອາສະວະ

[໑໐໔] ພິກຂຸເຫຼົ່ານັ້ນ ຊື່ນຊົມ ຍິນດີ ພາສິດຂອງທ່ານພຣະສາຣີບຸດວ່າ "ດີແທ້ ຂ້ານ້ອຍ" ແລ້ວໄດ້ຖາມບັນຫາກັບທ່ານພຣະສາຣີບຸດຕໍ່ໄປວ່າ "ອະທິບາຍແມ່ນຢ່າງອື່ນເປັນ ເຫດຊີ້ບອກວ່າພຣະອະຣິຍະສາວົກຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳມາສູ່ພຣະສັດທຳນີ້ ຍັງມີຢູ່ອີກຫຼືບໍ່?"

ທ່ານພຣະສາຣີບຸດຕອບວ່າ "ຍັງມີຢູ່ ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອາສະວະ[໑] ເຫດເກີດແຫ່ງອາສະວະ ຄວາມດັບແຫ່ງອາສະວະ ແລະ ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາສະວະ ເມື່ອນັ້ນ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສຳມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທຳ ມາສູ່ພຣະສັດທຳນີ້

ອາສະວະ ເປັນແນວໃດ? ເຫດເກີດແຫ່ງອາສະວະ ເປັນແນວໃດ? ຄວາມດັບແຫ່ງອາສະວະ ເປັນແນວໃດ? ຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາສະວະ ເປັນແນວໃດ?

ອາສະວະ ໓ ປະການນີ້ ຄື

໑. ກາມາສະວະ (ອາສະວະຄືກາມ)
໒. ພະວາສະວະ (ອາສະວະຄືພົບ)
໓. ອະວິດຊາສະວະ (ອາສະວະຄືອະວິດຊາ)

ຍ້ອນອະວິດຊາເກີດ ເຫດເກີດແຫ່ງອາສະວະຈຶ່ງມີ
ຍ້ອນອະວິດຊາດັບ ຄວາມດັບແຫ່ງອາສະວະຈຶ່ງມີ

ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສໍາມາທິດຖິ ໒. ສໍາມາສັງກັບປະ
໓. ສໍາມາວາຈາ ໔. ສໍາມາກໍາມັນຕະ
໕. ສໍາມາອາຊີວະ ໖. ສໍາມາວາຍາມະ
໗. ສໍາມາສະຕິ ໘. ສໍາມາສະມາທິ

ນີ້ແລ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາສະວະ

ເມື່ອໃດ ພຣະອະຣິຍະສາວົກຮູ້ແຈ້ງອາສະວະ ເຫດເກີດແຫ່ງອາສະວະ ຄວາມດັບແຫ່ງອາສະວະ ແລະຂໍ້ປະຕິບັດໃຫ້ເຖິງຄວາມດັບແຫ່ງອາສະວະຢ່າງນີ້ ເມື່ອນັ້ນ ທ່ານລະຣາຄານຸໄສບັນເທົາ ປະຕິຄານຸໄສ ຖອນທິດຖານຸໄສແລະມານານຸໄສທີ່ວ່າ "ເປັນເຮົາ" ໂດຍປະການທັງປວງ ລະອະວິດຊາໄດ້ແລ້ວ ເຮັດວິດຊາໃຫ້ເກີດຂຶ້ນແລ້ວເປັນຜູ້ເຮັດທີ່ສຸດແຫ່ງທຸກໄດ້ໃນປັດຈຸບັນນີ້ເອງ ແມ່ນດ້ວຍເຫດພຽງທໍ່ນີ້ ພຣະອະຣິຍະສາວົກກໍຊື່ວ່າມີສໍາມາທິດຖິ ມີຄວາມເຫັນກົງ ມີຄວາມເຫຼື້ອມໃສອັນແນ່ວແນ່ໃນທໍາ ມາສູ່ພຣະສັດທໍານີ້"

ທ່ານພຣະສາຣີບຸດໄດ້ກ່າວພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊື່ນຊົມພາສິດຂອງທ່ານພຣະສາຣີບຸດ ດັ່ງນີ້ແລ

**ສໍາມາທິດຖິສູດ ທີ ໙ ຈົບ**

ທ່ານຜູ້ມີອາຍຸທັງຫຼາຍ ໃນທໍາ ໖ ບົດທີ່ກ່າວມາແລ້ວ ເປັນແນວໃດ?
ຄື ທຸກ ຊະຣາແລະມໍລະນະ ອຸປາທານ ອາຍະຕະນະ ໖ ນາມຮູບ ວິນຍານ

ໃນທຳ ໔ ບົດ ທີ່ກ່າວມາແລ້ວ ເປັນແນວໃດ?
ຄື ຊາດ ຕັນຫາ ເວທະນາ ອະວິດຊາເປັນທີ ໔
ໃນທຳ ໕ ບົດ ທີ່ກ່າວມາແລ້ວ ເປັນແນວໃດ?
ຄື ອາຫານ ພົບ ຜັດສະ ສັງຂານ ອາສະວະເປັນທີ ໕
໖ ປະການ ເປັນແນວໃດ? ຂ້າພະເຈົ້າກ່າວມາແລ້ວ
໔ ປະການ ເປັນແນວໃດ? ຂ້າພະເຈົ້າກໍກ່າວມາແລ້ວ
໕ ປະການ ເປັນແນວໃດ? ຂ້າພະເຈົ້າກໍກ່າວມາແລ້ວ
ແລະ ບົດແຫ່ງສັງຂານທັງປວງມີ ໑໕ ບົດ ດັ່ງກ່າວມານີ້ແລ

## ໑໐. ມະຫາສະຕິປັດຖານສູດ[໑]

### ວ່າດ້ວຍການຈະເລີນສະຕິປັດຖານສູດໃຫຍ່

[໑໐໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນິຄົມຂອງຊາວກຸຣຸ ຊື່ກຳມາດທຳມະແຄວັນກຸຣຸໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

### ອຸດເທດ

[໑໐໖] "ພິກຂຸທັງຫຼາຍ ທາງນີ້ເປັນທາງສາຍດຽວ[໒] ເພື່ອຄວາມບໍລິສຸດຂອງເຫຼົ່າສັດ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ[໓] ເພື່ອເຮັດໃຫ້ແຈ້ງນິບພານ ທາງນີ້ ຄື ສະຕິປັດຖານ[໔] ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ

ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

**ອຸດເທດ ຈົບ**

## ກາຍານຸປັດສະນາສະຕິປັດຖານ

**(ການພິຈາລະນາກາຍ)**

## ໝວດລົມຫາຍໃຈເຂົ້າອອກ

[໑໐໗] ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ໄປຢູ່ໃນປ່າ ໄປຢູ່ທີ່ເຫງົ້າໄມ້ ຫຼື ທີ່ເຮືອນວ່າງ[໑] ນັ່ງຄູ້ບັນລັງ[໒] ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ[໓] ມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ

ເມື່ອຫັນໃຈເຂົ້າຍາວ ກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າຍາວ"
ເມື່ອຫັນໃຈອອກຍາວ ກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກຍາວ"
ເມື່ອຫັນໃຈເຂົ້າສັ້ນ ກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າສັ້ນ"
ເມື່ອຫັນໃຈອອກສັ້ນ ກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກສັ້ນ"
ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ກອງລົມທັງປວງ ຫັນໃຈອອກ"
ຕັ້ງໃຈຮູ້ວ່າ "ເຮົາລະງັບກາຍສັງຂານ[໑] ຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາລະງັບກາຍສັງຂານ ຫັນໃຈອອກ"

ພິກຂຸທັງຫຼາຍ ຊ່າງຊຽນ ຫຼື ລູກມືຊ່າງຊຽນຜູ້ມີຄວາມຊ່ຽວຊານ ເມື່ອດຶງເຊືອກຍາວ ກໍຮູ້ແຈ້ງວ່າ "ເຮົາດຶງເຊືອກຍາວ" ເມື່ອດຶງເຊືອກສັ້ນ ກໍຮູ້ແຈ້ງວ່າ "ເຮົາດຶງເຊືອກສັ້ນ" ແມ່ນສັນໃດ

ພິກຂຸ ກໍສັນນັ້ນຄືກັນ

ເມື່ອຫັນໃຈເຂົ້າຍາວ ກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າຍາວ"

ເມື່ອຫັນໃຈອອກຍາວ ກໍຮູ້ແຈ້ງວ່າ “ເຮົາຫັນໃຈອອກຍາວ”
ເມື່ອຫັນໃຈເຂົ້າສັ້ນ ກໍຮູ້ແຈ້ງວ່າ “ເຮົາຫັນໃຈເຂົ້າສັ້ນ”
ເມື່ອຫັນໃຈອອກສັ້ນ ກໍຮູ້ແຈ້ງວ່າ “ເຮົາຫັນໃຈອອກສັ້ນ”
ຕັ້ງໃຈຮູ້ວ່າ “ເຮົາກໍານົດຮູ້ກອງລົມທັງປວງ ຫັນໃຈເຂົ້າ”
ຕັ້ງໃຈຮູ້ວ່າ “ເຮົາກໍານົດຮູ້ກອງລົມທັງປວງ ຫັນໃຈອອກ”
ຕັ້ງໃຈຮູ້ວ່າ “ເຮົາລະງັບກາຍສັງຂານ ຫັນໃຈເຂົ້າ”
ຕັ້ງໃຈຮູ້ວ່າ “ເຮົາລະງັບກາຍສັງຂານ ຫັນໃຈອອກ”

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນ໑ຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກ໒ຢູ່ ຫຼືພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດ (ແຫ່ງລົມຫັນໃຈ) ໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບ (ແຫ່ງລົມຫັນໃຈ) ໃນກາຍຢູ່ ຫຼືພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບ (ແຫ່ງລົມຫັນໃຈ)ໃນກາຍຢູ່

ຫຼື ວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ “ກາຍມີຢູ່” ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ແລະ ບໍ່ຢຶດໝັ້ນຖືໝັ້ນອັນໃດ ໆ ໃນໂລກ ພິກຂຸຈຶ່ງຊື່ວ່າ ພິຈາລະນາເຫັນກາຍໃນກາຍຢູ່ ຢ່າງນີ້ແລ

**ໝວດລົມຫັນໃຈເຂົ້າອອກ ຈົບ**

## ໝວດອິລິຍາບົດ

[໑໐໗] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸ

ເມື່ອຍ່າງ ກໍຮູ້ແຈ້ງວ່າ “ເຮົາຍ່າງ”
ເມື່ອຢືນ ກໍຮູ້ແຈ້ງວ່າ “ເຮົາຢືນ”
ເມື່ອນັ່ງ ກໍຮູ້ແຈ້ງວ່າ “ເຮົານັ່ງ”
ເມື່ອນອນ ກໍຮູ້ແຈ້ງວ່າ “ເຮົານອນ”

ພິກຂຸນັ້ນ ເມື່ອດຳລົງກາຍຢູ່ໂດຍອາການໃດ ໆ ກໍຮູ້ແຈ້ງກາຍທີ່ດຳລົງຢູ່ໂດຍອາການນັ້ນ ໆ ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນ໑ຢູ່ ຯລຯ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນກາຍໃນກາຍຢູ່ ແນວນີ້ແລ

**ໝວດອິລິຍາບົດ ຈົບ**

## ໝວດສຳປະຊັນຍະ

[໑໐໙] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸ

ທຳຄວາມຮູ້ສຶກຕົວໃນການ ຍ່າງໄປ ການຖອຍກັບ
ທຳຄວາມຮູ້ສຶກຕົວໃນການ ແນມເບິ່ງ ການຫຼຽວເບິ່ງ
ທຳຄວາມຮູ້ສຶກຕົວໃນການ ຄູ້ເຂົ້າ ການຢຽດອອກ
ທຳຄວາມຮູ້ສຶກຕົວໃນການ ຄອງສັງຄາຕິ ບາດແລະຈີວອນ
ທຳຄວາມຮູ້ສຶກຕົວໃນການ ສັນ ການດື່ມ ການຫຍ້ຳ ການຊີມ
ທຳຄວາມຮູ້ສຶກຕົວໃນການ ຖ່າຍອຸດຈາຣະແລະປັດສາວະ
ທຳຄວາມຮູ້ສຶກຕົວໃນການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ່ງ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນ°ຢູ່ ຯລຯ ພິກຂຸ ຈຶ່ງຊື່ວ່າພິຈາລະນາເຫັນກາຍໃນກາຍຢູ່ ຢ່າງນີ້ແລ

### ໝວດສຳປະຊັນຍະ ຈົບ

## ໝວດສິ່ງປະຕິກູນ

[໑໑໐] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນກາຍນີ້ ຕັ້ງແຕ່ຝາຕີນຂຶ້ນໄປເບື້ອງເທິງ ຕັ້ງແຕ່ປາຍຜົມລົງມາເບື້ອງລຸ່ມ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍສິ່ງທີ່ບໍ່ສະອາດມີຊະນິດຕ່າງ ໆ ວ່າ

"ໃນກາຍນີ້ ມີຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ° ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ດີ ຂີ້ກະເທີ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ"

ພິກຂຸທັງຫຼາຍ ຖົງມີປາກ ໒ ຂ້າງ ເຕັມໄປດ້ວຍທັນຍະພືດຊະນິດຕ່າງ ໆ ຄື ເຂົ້າສາລີ ເຂົ້າເປືອກ ຖົ່ວຂຽວ ຖົ່ວເຫຼືອງ ເມັດງາ ເຂົ້າສານ ປຽບເໝືອນ ຄົນຕາດີເປີດຖົງຍາວນັ້ນອອກພິຈາລະນາເຫັນວ່າ "ນີ້ເປັນເຂົ້າສາລີ ນີ້ເປັນເຂົ້າເປືອກ ນີ້ເປັນຖົ່ວຂຽວ ນີ້ເປັນຖົ່ວເຫຼືອງ ນີ້ເປັນເມັດງາ ນີ້ເປັນເຂົ້າສານ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ພິຈາລະນາເຫັນກາຍນີ້ຕັ້ງແຕ່ຝາຕີນຂຶ້ນໄປເບື້ອງເທິງ ຕັ້ງແຕ່ປາຍຜົມລົງມາເບື້ອງລຸ່ມ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍສິ່ງທີ່ບໍ່ສະອາດຊະນິດຕ່າງ ໆ ວ່າ

"ໃນກາຍນີ້ ມີຜົມ ຂົນ ฯລฯ ໄຂຂໍ້ ມູດ"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່໌ ฯລฯ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນກາຍໃນກາຍຢູ່ ຢ່າງນີ້ແລ

**ໝວດສິ່ງປະຕິກູນ ຈົບ**

## ໝວດທາດ

[໑໑໑] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນກາຍນີ້ຕາມທີ່ຕັ້ງຢູ່ ຕາມທີ່ດຳລົງຢູ່ໂດຍຄວາມເປັນທາດວ່າ "ໃນກາຍນີ້ມີທາດດິນ ທາດນ້ຳ ທາດໄຟ ທາດລົມຢູ່"

ພິກຂຸທັງຫຼາຍ ຄົນຂ້າງົວ ຫຼື ລູກມືຂອງຄົນຂ້າງົວຜູ້ມີຄວາມຊ່ຽວຊານ ເມື່ອຂ້າງົວແລ້ວແຍກອະໄວຍະວະອອກເປັນສ່ວນ ໆ ນັ່ງຢູ່ທີ່ທົນທາງໃຫຍ່ສີ່ແຍກ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ພິຈາລະນາເຫັນກາຍນີ້ຕາມທີ່ຕັ້ງຢູ່ ຕາມທີ່ດຳລົງຢູ່ໂດຍຄວາມເປັນທາດວ່າ "ໃນກາຍນີ້ມີທາດດິນ ທາດນ້ຳ ທາດໄຟ ທາດລົມຢູ່"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ฯລฯ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນກາຍໃນກາຍຢູ່ ຢ່າງນີ້ແລ

**ໝວດທາດ ຈົບ**

## ໝວດປ່າຊ້າ ໙ ໝວດ

[໑໑໔] ພິກຂຸທັງຫຼາຍ ອີກປະການໜຶ່ງ

໑. ພິກຂຸເຫັນຊາກສົບອັນເຂົາຖິ້ມປະໄວ້ໃນປ່າຊ້າ ເຊິ່ງຕາຍແລ້ວ ໑ ມື້ ຕາຍແລ້ວ ໔ ມື້ ຫຼື ຕາຍແລ້ວ ໓ ມື້ ເປັນສົບຂຶ້ນອືດ ສົບຂຽວກ່ຳ ສົບມີນ້ຳເຫຼືອງຍ້ອຍ ແມ່ນສັນໃດ ພິກຂຸນັ້ນນຳກາຍນີ້ເຂົ້າໄປປຽບທຽບ ໃຫ້ເຫັນສັນນັ້ນຄືກັນວ່າ "ເຖິງກາຍນີ້ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ລ່ວງພົ້ນຄວາມເປັນແນວນັ້ນໄປໄດ້"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ฯລฯ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນກາຍໃນກາຍຢູ່ ຢ່າງນີ້ແລ

໔. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າເຊິ່ງຖືກກາສັບກິນ ແຮ້ງສວບກິນ ນົກຕະກຸມສວບກິນ ໝາກັດກິນ ໝາຈິ້ງຈອກກັດກິນ ຫຼື ສັດນ້ອຍ ໆ ຫຼາຍຊະນິດກັດກິນຢູ່ ແມ່ນສັນໃດ

ພິກຂຸນັ້ນນຳກາຍນີ້ເຂົ້າໄປປຽບທຽບ ໃຫ້ເຫັນສັນນັ້ນຄືກັນວ່າ "ເຖິງກາຍນີ້ ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ລ່ວງພົ້ນຄວາມເປັນແນວນັ້ນໄປໄດ້"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ຯລຯ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນກາຍໃນກາຍຢູ່ ແນວນີ້ແລ

໓. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເປັນໂຄງກະດູກ ຍັງມີຊີ້ນແລະເລືອດ ມີເອັນກ່ຽວຮັດຢູ່ ແມ່ນສັນໃດ ຯລຯ

໔. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເປັນໂຄງກະດູກ ບໍ່ມີຊີ້ນແຕ່ຍັງມີເລືອດເປື້ອນເປິະ ມີເອັນກ່ຽວຮັດຢູ່ ແມ່ນສັນໃດ ຯລຯ

໕. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເປັນໂຄງກະດູກ ບໍ່ມີເລືອດແລະຊີ້ນແຕ່ຍັງມີເອັນກ່ຽວຮັດຢູ່ ແມ່ນສັນໃດ ຯລຯ

໖. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເປັນໂຄງກະດູກ ບໍ່ມີເອັນກ່ຽວຮັດ ກະຈຸຍກະຈາຍໄປໃນທິດໃຫຍ່ ທິດສຽງ ຄື ກະດູກມືຢູ່ທາງທິດໜຶ່ງ ກະດູກຕີນຢູ່ທາງທິດໜຶ່ງ ກະດູກແຂ່ງຢູ່ທາງທິດໜຶ່ງ ກະດູກຂາຢູ່ທາງທິດໜຶ່ງ ກະດູກແອວຢູ່ທາງທິດໜຶ່ງ ກະດູກຫຼັງ ຢູ່ທາງທິດໜຶ່ງ ກະດູກຂ້າງຢູ່ທາງທິດໜຶ່ງ ກະດູກໜ້າເອິກຢູ່ທາງທິດໜຶ່ງ ກະດູກແຂນຢູ່ທາງທິດໜຶ່ງ ກະດູກບ່າໄຫຼ່ຢູ່ທາງທິດໜຶ່ງ ກະດູກຄໍຢູ່ທາງທິດໜຶ່ງ ກະດູກຄາງຢູ່ທາງທິດໜຶ່ງ ກະດູກແຂ້ວຢູ່ທາງທິດໜຶ່ງ ກະໂຫຼກຫົວຢູ່ທາງທິດໜຶ່ງ ແມ່ນສັນໃດ ພິກຂຸນັ້ນ ນຳກາຍນີ້ເຂົ້າໄປປຽບທຽບໃຫ້ເຫັນສັນນັ້ນຄືກັນວ່າ "ເຖິງກາຍນີ້ ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ລ່ວງພົ້ນຄວາມເປັນແນວນັ້ນໄປໄດ້"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ຯລຯ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນກາຍໃນກາຍຢູ່ ແນວນີ້ແລ

໗. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງເປັນທ່ອນກະດູກສີຂາວເໝືອນສີຫອຍສັງ ແມ່ນສັນໃດ ຯລຯ

໘. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງເປັນທ່ອນກະດູກກອງຢູ່ນຳກັນເກີນກວ່າ ໑ ປີ ແມ່ນສັນໃດ ຯລຯ

໙. ພິກຂຸເຫັນຊາກສົບອັນເຂົາຖິ້ມໄວ້ໃນປ່າຊ້າ ເຊິ່ງເປັນກະດູກຜຸປົ່ນເປັນຕ່ອນນ້ອຍຕ່ອນນ້ອຍ ແມ່ນສັນໃດ ພິກຂຸນັ້ນນຳກາຍນີ້ເຂົ້າໄປປຽບທຽບໃຫ້ເຫັນ ສັນນັ້ນຄືກັນວ່າ "ເຖິງກາຍ

ນີ້ກໍມີສະພາບແນວນັ້ນ ມີລັກສະນະແນວນັ້ນ ບໍ່ລ່ວງພົ້ນຄວາມເປັນແນວໄປໄດ້"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ຫຼື ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນກາຍຢູ່

ຫຼື ວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ກາຍມີຢູ່" ກໍພຽງເພື່ອອາໄສ ຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ບໍ່ຢຶດໝັ້ນຖືໝັ້ນອັນໃດ ໆ ໃນໂລກ ພິກຂຸ ຈຶ່ງຊື່ວ່າພິຈາລະນາເຫັນກາຍໃນກາຍຢູ່ ແນວນີ້ແລ

**ໝວດປ່າຊ້າ ໙ ໝວດ ຈົບ**

**ກາຍານຸປັດສະນາສະຕິປັດຖານ ຈົບ**

## ເວທະນານຸປັດສະນາສະຕິປັດຖານ

[໑໑໓] ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ເປັນແນວໃດ? ຄື ພິກຂຸໃນທຳວິໄນນີ້

໑. ເມື່ອສະເຫວີຍສຸກຂະເວທະນາ (ຄວາມຮູ້ສຶກສຸກ) ກໍຮູ້ແຈ້ງວ່າ "ເຮົາສະເຫວີຍສຸກເວທະນາຢູ່"
໒. ເມື່ອສະເຫວີຍທຸກຂະເວທະນາ (ຄວາມຮູ້ສຶກທຸກ) ກໍຮູ້ແຈ້ງວ່າ "ເຮົາສະເຫວີຍທຸກຂະເວທະນາຢູ່"
໓. ເມື່ອສະເຫວີຍອະທຸກຂະມະສຸຂະເວທະນາ (ຄວາມຮູ້ສຶກບໍ່ທຸກບໍ່ສຸກ) ກໍຮູ້ແຈ້ງວ່າ "ເຮົາສະເຫວີຍອະທຸກຂະມະສຸຂະເວທະນາຢູ່"
໔. ເມື່ອສະເຫວີຍສຸກຂະເວທະນາທີ່ມີອາມິດ[1] ກໍຮູ້ແຈ້ງວ່າ "ເຮົາສະເຫວີຍສຸກເວທະນາທີ່ມີອາມິດ"
໕. ເມື່ອສະເຫວີຍສຸກຂະເວທະນາທີ່ບໍ່ມີອາມິດ ກໍຮູ້ແຈ້ງວ່າ "ເຮົາສະເຫວີຍສຸກເວທະນາທີ່ບໍ່ມີອາມິດ"
໖ ເມື່ອສະເຫວີຍທຸກຂະເວທະນາທີ່ມີອາມິດ ກໍຮູ້ແຈ້ງວ່າ "ເຮົາສະເຫວີຍທຸກຂະເວທະນາທີ່ມີອາມິດຢູ່"
໗. ເມື່ອສະເຫວີຍທຸກຂະເວທະນາທີ່ບໍ່ມີອາມິດ ກໍຮູ້ແຈ້ງວ່າ "ເຮົາສະເຫວີຍທຸກ

ຂະເວທະນາທີ່ບໍ່ມີອາມິດຢູ່"

໘. ເມື່ອສະເຫວີຍອະທຸກຂະມະສຸຂະເວທະນາທີ່ມີອາມິດ ກໍຮູ້ແຈ້ງວ່າ "ເຮົາສະເຫວີຍອະທຸກຂົມສຸກເວທະນາທີ່ມີອາມິດຢູ່"

໙. ເມື່ອສະເຫວີຍອະທຸກຂະມະສຸຂະເວທະນາທີ່ບໍ່ມີອາມິດ ກໍຮູ້ແຈ້ງວ່າ "ເຮົາສະເຫວີຍອະທຸກຂະມະສຸຂະເວທະນາທີ່ບໍ່ມີອາມິດຢູ່"

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍພາຍໃນ໌ຢູ່ ພິຈາລະນາເຫັນ ເວທະນາໃນເວທະນາທັງຫຼາຍພາຍນອກ໌ຢູ່ ຫຼື ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນເວທະນາທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນເວທະນາທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນເວທະນາທັງຫຼາຍຢູ່

ຫຼືວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ເວທະນາມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ(ຕັນຫາແລະທິດຖິ)ຢູ່ ບໍ່ຢຶດໝັ້ນຖືໝັ້ນອັນໃດ ໆ ໃນໂລກ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ແນວນີ້ແລ

**ເວທະນານຸປັດສະນາສະຕິປັດຖານ ຈົບ**

## ຈິດຕານຸປັດສະນາສະຕິປັດຖານ

[໑໑໔] ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈິດມີຣາຄະ ກໍຮູ້ແຈ້ງວ່າ "ຈິດມີຣາຄະ"
໒. ຈິດປາສະຈາກຣາຄະ ກໍຮູ້ແຈ້ງວ່າ "ຈິດປາສະຈາກຣາຄະ"
໓. ຈິດມີໂທສະ ກໍຮູ້ແຈ້ງວ່າ "ຈິດມີໂທສະ"
໔. ຈິດປາສະຈາກໂທສະ ກໍຮູ້ແຈ້ງວ່າ "ຈິດປາສະຈາກໂທສະ"
໕. ຈິດມີໂມຫະ ກໍຮູ້ແຈ້ງວ່າ "ຈິດມີໂມຫະ"
໖. ຈິດປາສະຈາກໂມຫະ ກໍຮູ້ແຈ້ງວ່າ "ຈິດປາສະຈາກໂມຫະ"
໗. ຈິດຫົດຫູ່ ກໍຮູ້ແຈ້ງວ່າ "ຈິດຫົດຫູ່"
໘. ຈິດຟຸ້ງຊ່ານ ກໍຮູ້ແຈ້ງວ່າ "ຈິດຟຸ້ງຊ່ານ"
໙. ຈິດເປັນມະຫັກຄະຕະ ກໍຮູ້ແຈ້ງວ່າ "ຈິດເປັນມະຫັກຄະຕະ"

໑໐. ຈິດບໍ່ເປັນມະຫັກຄະຕະ ກໍຮູ້ແຈ້ງວ່າ “ຈິດບໍ່ເປັນມະຫັກຄະຕະ”
໑໑. ຈິດມີຈິດອື່ນຍິ່ງກວ່າ ກໍຮູ້ແຈ້ງວ່າ “ຈິດມີຈິດອື່ນຍິ່ງກວ່າ”
໑໒. ຈິດບໍ່ມີຈິດອື່ນຍິ່ງກວ່າ ກໍຮູ້ແຈ້ງວ່າ “ຈິດບໍ່ມີຈິດອື່ນຍິ່ງກວ່າ”
໑໓. ຈິດເປັນສະມາທິ ກໍຮູ້ແຈ້ງວ່າ “ຈິດເປັນສະມາທິ”
໑໔. ຈິດບໍ່ເປັນສະມາທິ ກໍຮູ້ແຈ້ງວ່າ “ຈິດບໍ່ເປັນສະມາທິ”
໑໕. ຈິດລຸດພົ້ນແລ້ວ ກໍຮູ້ແຈ້ງວ່າ “ຈິດລຸດພົ້ນແລ້ວ”
໑໖. ຈິດບໍ່ລຸດພົ້ນ ກໍຮູ້ແຈ້ງວ່າ “ຈິດບໍ່ລຸດພົ້ນ”

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນຈິດໃນຈິດພາຍໃນຢູ່ ພິຈາລະນາເຫັນຈິດໃນຈິດພາຍນອກຢູ່ ຫຼື ພິຈາລະນາເຫັນຈິດໃນຈິດທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນຈິດຢູ່ ພິຈາລະນາເຫັນທຳເປັນເຫດດັບໃນຈິດຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນຈິດຢູ່

ຫຼືວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ “ຈິດມີຢູ່” ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິທໍ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ບໍ່ຢຶດໝັ້ນຖືໝັ້ນອັນໃດ ໆ ໃນໂລກ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນຈິດໃນຈິດຢູ່ເປັນແນວນີ້ແລ

**ຈິດຕານຸປັດສະນາສະຕິປັດຖານ ຈົບ**

## ທຳມານຸປັດສະນາສະຕິປັດຖານ

## ໝວດນິວອນ

[໑໑໕] ພິກຂຸທັງຫຼາຍ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ນິວອນ ໕ ປະການຢູ່
ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ນິວອນ ໕ ປະການຢູ່ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້

໑. ເມື່ອກາມສັນທະພາຍໃນມີຢູ່ ກໍຮູ້ແຈ້ງວ່າ “ກາມສັນທະພາຍໃນຂອງເຮົາມີຢູ່” ຫຼືເມື່ອກາມສັນທະພາຍໃນບໍ່ມີ ກໍຮູ້ແຈ້ງວ່າ “ກາມສັນທະພາຍໃນຂອງເຮົາບໍ່ມີ” ການເກີດຂຶ້ນແຫ່ງກາມສັນທະທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ການລະກາມສັນທະທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ແລະ ການສັນທະທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ

໒. ເມື່ອພະຍາບາດພາຍໃນມີຢູ່ ກໍຮູ້ແຈ້ງວ່າ "ພະຍາບາດພາຍໃນຂອງເຮົາມີຢູ່" ຫຼືເມື່ອພະຍາບາດພາຍໃນບໍ່ມີ ກໍຮູ້ແຈ້ງວ່າ "ພະຍາບາດພາຍໃນຂອງເຮົາບໍ່ມີ" ການເກີດຂຶ້ນແຫ່ງພະຍາບາດທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ການລະພະຍາບາດທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ແລະ ພະຍາບາດທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ

໓. ເມື່ອຖີນະມິດທະພາຍໃນມີຢູ່ ກໍຮູ້ແຈ້ງວ່າ "ຖີນະມິດທະພາຍໃນຂອງເຮົາມີຢູ່" ຫຼືເມື່ອຖີນະມິດທະພາຍໃນບໍ່ມີ ກໍຮູ້ແຈ້ງວ່າ "ຖີນະມິດທະພາຍໃນຂອງເຮົາບໍ່ມີ" ການເກີດຂຶ້ນແຫ່ງຖີນະມິດທະທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ການລະຖີນະມິດທະທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ແລະ ຖີນະມິດທະທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ

໔. ເມື່ອອຸດທັດຈະກຸກກຸດຈະພາຍໃນມີຢູ່ ກໍຮູ້ແຈ້ງວ່າ "ອຸດທັດຈະກຸກກຸດຈະພາຍໃນຂອງເຮົາມີຢູ່" ຫຼື ເມື່ອອຸດທັດຈະກຸກກຸດຈະພາຍໃນບໍ່ມີ ກໍຮູ້ແຈ້ງວ່າ "ອຸດທັດຈະກຸກກຸດຈະພາຍໃນຂອງເຮົາບໍ່ມີ" ການເກີດຂຶ້ນແຫ່ງອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ການລະອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ແລະອຸດທັດຈະກຸກກຸດຈະທີ່ລະໄດ້ແລ້ວ ຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ

໕. ເມື່ອວິຈິກິດສາພາຍໃນມີຢູ່ ກໍຮູ້ແຈ້ງວ່າ "ວິຈິກິດສາພາຍໃນຂອງເຮົາມີຢູ່" ຫຼື ເມື່ອວິຈິກິດສາພາຍໃນບໍ່ມີ ກໍຮູ້ແຈ້ງວ່າ "ວິຈິກິດສາພາຍໃນຂອງເຮົາບໍ່ມີ" ການເກີດຂຶ້ນແຫ່ງວິຈິກິດສາທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ການລະວິຈິກິດສາທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ແລະ ວິຈິກິດສາທີ່ລະໄດ້ແລ້ວ ຈະບໍ່ເກີດຂຶ້ນຕໍ່ໄປອີກດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍນອກຢູ່ ຫຼື ພິຈາລະນາເຫັນທຳໃນທຳທັງຫຼາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດ ທັງທຳເປັນເຫດດັບໃນທຳທັງຫຼາຍຢູ່

ຫຼື ວ່າ ພິກຂຸນັ້ນ ມີສະຕິຜາກົດຢູ່ສະເພາະໜ້າວ່າ "ທຳມີຢູ່" ກໍພຽງເພື່ອອາໄສ ຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ບໍ່ຢຶດໝັ້ນຖືໝັ້ນອັນໃດ ໆ ໃນໂລກ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ນິວອນ ໕ ປະການຢູ່ ຢ່າງນີ້ແລ

**ໝວດນິວອນ ຈົບ**

## ໝວດຂັນ

[໑໑໖] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອຸປາທານຂັນ ໕ ປະການຢູ່

ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອຸປາທານຂັນ ໕ ປະການຢູ່ ເປັນແນວໃດ? ຄື ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອຸປາທານຂັນ ໕ ປະການຢູ່ ວ່າ

໑. ຮູບເປັນແນວນີ້ ຄວາມເກີດແຫ່ງຮູບເປັນແນວນີ້ ຄວາມດັບແຫ່ງຮູບເປັນແນວນີ້
໒. ເວທະນາເປັນແນວນີ້ ຄວາມເກີດແຫ່ງເວທະນາເປັນແນວນີ້ ຄວາມດັບແຫ່ງເວທະນາເປັນແນວນີ້
໓. ສັນຍາເປັນແນວນີ້ ຄວາມເກີດແຫ່ງສັນຍາເປັນແນວນີ້ ຄວາມດັບແຫ່ງສັນຍາເປັນແນວນີ້
໔. ສັງຂານເປັນແນວນີ້ ຄວາມເກີດແຫ່ງສັງຂານເປັນແນວນີ້ ຄວາມດັບແຫ່ງສັງຂານເປັນແນວນີ້
໕. ວິນຍານເປັນແນວນີ້ ຄວາມເກີດແຫ່ງວິນຍານເປັນແນວນີ້ ຄວາມດັບແຫ່ງວິນຍານເປັນແນວນີ້

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນ[໑]ຢູ່ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍນອກ[໒]ຢູ່ ຫຼື ພິຈາລະນາເຫັນທຳໃນທຳທັງຫຼາຍທັງພາຍໃນ ທັງພາຍນອກຢູ່ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳ ເປັນເຫດດັບໃນທຳທັງຫຼາຍຢູ່

ຫຼື ວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ທຳມີຢູ່" ກໍພຽງເພື່ອອາໄສຈະເລີນຍານ ຈະເລີນສະຕິເທົ່ານັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ບໍ່ຍຶດໝັ້ນຖືໝັ້ນອັນໃດ ໆ ໃນໂລກ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອຸປາທານຂັນ ໕ ປະການຢູ່ ແນວນີ້ແລ

### ໝວດຂັນ ຈົບ

## ໝວດອາຍະຕະນະ

[໑໑໗] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອາຍະຕະນະພາຍໃນ ໖ ປະການ ແລະ ອາຍະຕະນະພາຍນອກ ໖ ປະການຢູ່

ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອາຍະຕະນະພາຍໃນ ໖ ປະການແລະອາຍະຕະນະພາຍນອກ ໖ ປະການຢູ່ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຮູ້ແຈ້ງຕາ ຮູ້ແຈ້ງຮູບ ແລະ ສັງໂຍດໃດອາໄສຕາແລະຮູບທັງ ໔ ນັ້ນເກີດຂຶ້ນກໍຮູ້ແຈ້ງສັງໂຍດນັ້ນ ການເກີດຂຶ້ນແຫ່ງສັງໂຍດທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ການລະສັງໂຍດທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ແລະ ສັງໂຍດທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ

໔. ຮູ້ແຈ້ງຫູ ຮູ້ແຈ້ງສຽງ ຯລຯ
໓. ຮູ້ແຈ້ງດັງ ຮູ້ແຈ້ງກິ່ນ ຯລຯ
໔. ຮູ້ແຈ້ງລີ້ນ ຮູ້ແຈ້ງຣົດ ຯລຯ
໕. ຮູ້ແຈ້ງກາຍ ຮູ້ແຈ້ງໂຜດຖັບພະ ຯລຯ

໖. ຮູ້ແຈ້ງໃຈ ຮູ້ແຈ້ງທຳມາຣົມ ແລະ ສັງໂຍດໃດອາໄສໃຈແລະທຳມາຣົມທັງ ໔ ນັ້ນເກີດຂຶ້ນ ກໍຮູ້ແຈ້ງສັງໂຍດນັ້ນ ການເກີດຂຶ້ນແຫ່ງສັງໂຍດທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ການລະສັງໂຍດທີ່ເກີດຂຶ້ນແລ້ວ ມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ແລະສັງໂຍດທີ່ລະໄດ້ແລ້ວຈະບໍ່ເກີດຂຶ້ນຕໍ່ໄປອີກມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍນອກຢູ່ ຫຼື ພິຈາລະນາເຫັນທຳໃນທຳທັງຫຼາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນທຳທັງຫຼາຍຢູ່

ຫຼື ວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ທຳມີຢູ່" ກໍພຽງເພື່ອອາໄສ ຈະເລີນຍານ ຈະເລີນສະຕິທໍ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ) ຢູ່ ບໍ່ຍຶດໝັ້ນຖືໝັ້ນອັນໃດ ໆ ໃນໂລກ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອາຍະຕະນະພາຍໃນ ໖ ປະການ ແລະອາຍະຕະນະພາຍນອກ ໖ ປະການຢູ່ ແນວນີ້ແລ

**ໝວດອາຍະຕະນະ ຈົບ**

## ໝວດໂພດຊົງ

[໑໑໗] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ໂພດຊົງ ໗ ປະການຢູ່

ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ໂພດຊົງ ໗ ປະການຢູ່ ເປັນຢ່າງໃດ?

ຄື ພິກຂຸໃນທຳວິໄນນີ້

໑. ເມື່ອສະຕິສຳໂພດຊົງ[^]ພາຍໃນມີຢູ່ ກໍຮູ້ແຈ້ງວ່າ "ສະຕິສຳໂພດຊົງພາຍໃນ ຂອງເຮົາມີຢູ່" ຫຼືເມື່ອສະຕິສຳໂພດຊົງພາຍໃນບໍ່ມີ ກໍຮູ້ແຈ້ງວ່າ "ສະຕິສຳໂພດຊົງພາຍໃນຂອງເຮົາບໍ່ມີ" ຄວາມເກີດຂຶ້ນແຫ່ງສະຕິສຳໂພດຊົງ ທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ແລະຄວາມຈະເລີນບໍລິບູນແຫ່ງສະຕິສຳໂພດຊົງທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ

໒. ເມື່ອທຳມະວິຈະຍະສຳໂພດຊົງພາຍໃນມີຢູ່ ຯລຯ

໓. ເມື່ອວິຣິຍະສຳໂພດຊົງພາຍໃນມີຢູ່ ຯລຯ

໔. ເມື່ອປີຕິສຳໂພດຊົງພາຍໃນມີຢູ່ ຯລຯ

໕. ເມື່ອປັດສັດທິສຳໂພດຊົງພາຍໃນມີຢູ່ ຯລຯ

໖. ເມື່ອສະມາທິສຳໂພດຊົງພາຍໃນມີຢູ່ ຯລຯ

໗. ເມື່ອອຸເປກຂາສຳໂພດຊົງພາຍໃນມີຢູ່ ກໍຮູ້ແຈ້ງວ່າ "ອຸເປກຂາສຳໂພດຊົງ ພາຍໃນຂອງເຮົາມີຢູ່" ຫຼືເມື່ອອຸເປກຂາສຳໂພດຊົງພາຍໃນບໍ່ມີ ກໍຮູ້ແຈ້ງວ່າ "ອຸເປກຂາສຳໂພດຊົງພາຍໃນຂອງເຮົາບໍ່ມີ" ການເກີດຂຶ້ນແຫ່ງ ອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດຂຶ້ນມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ ແລະຄວາມຈະເລີນບໍລິບູນແຫ່ງອຸເປກຂາສຳໂພດຊົງທີ່ເກີດຂຶ້ນແລ້ວມີໄດ້ດ້ວຍເຫດໃດ ກໍຮູ້ແຈ້ງເຫດນັ້ນ

ດ້ວຍວິທີນີ້ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍນອກຢູ່ ຫຼືພິຈາລະນາເຫັນທຳໃນທຳທັງຫຼາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼືພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນທຳທັງຫຼາຍຢູ່

ຫຼືວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ທຳມີຢູ່" ກໍພຽງເພື່ອອາໄສ ຈະເລີນຍານ ຈະເລີນສະຕິທ່ານັ້ນ ບໍ່ອາໄສ(ຕັນຫາແລະທິດຖິ)ຢູ່ ບໍ່ຍຶດໝັ້ນຖືໝັ້ນອັນໃດ ໆ ໃນໂລກ ພິກຂຸຈຶ່ງຊື່ວ່າພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ໂພດຊົງ ໗ ປະການຢູ່ ແນວນີ້ແລ

**ໝວດໂພດຊົງ ຈົບ**

**ພານະວານທີ ໑ ຈົບ**

## ໝວດສັດຈະ

[໑໑໙] ພິກຂຸທັງຫຼາຍ ອີກປະການໜຶ່ງ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອະຣິຍະສັດ ໔ ຢູ່

ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອະຣິຍະສັດ ໔ ຢູ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ"
໒. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກຂະສະມຸໄທ"
໓. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກຂະນິໂຣທະ"
໔. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກຂະນິໂຣທະຄາມີນີປະຕິປະທາ"

## ທຸກຂະສັດຈະນິດເທດ[1]

[໑໙໐] ທຸກຂະອະຣິຍະສັດ ເປັນແນວໃດ?

ຄື ຊາດເປັນທຸກ ຊະຣາເປັນທຸກ ມໍລະນະເປັນທຸກ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດເປັນທຸກ ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ ຄວາມພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ວ່າໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ

[໑໙໑] ຊາດ ເປັນແນວໃດ?

ຄື ຄວາມເກີດ ຄວາມເກີດພ້ອມ ຄວາມຢັ່ງລົງ ຄວາມບັງເກີດ ຄວາມບັງເກີດສະເພາະ ຄວາມຜາກົດແຫ່ງຂັນ ຄວາມໄດ້ອາຍະຕະນະໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊາດ

[໑໙໒] ຊະຣາ ເປັນແນວໃດ?

ຄື ຄວາມແກ່ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍານ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

[໑໙໓] ມໍລະນະ ເປັນແນວໃດ?

ຄື ຄວາມຈຸຕິ ຄວາມເຄື່ອນໄປ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄືຄວາມຕາຍ ການທຳກາລະ ຄວາມແຕກແຫ່ງຂັນ ຄວາມປະຖິ້ມຮ່າງກາຍ ຄວາມຂາດສູນແຫ່ງຊີວິຕິນຊີຂອງເຫຼົ່າສັດນັ້ນ ໆ ຈາກໝູ່ສັດນັ້ນ ໆ ນີ້ຮຽກວ່າ ມໍລະນະ

[໑໙໔] ໂສກະ ເປັນແນວໃດ?

ຄື ຄວາມໂສກເສົ້າ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມເຫືອດແຫ້ງພາຍໃນ ຄວາມແຫ້ງກອບພາຍໃນຂອງຜູ້ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື)ຜູ້ທີ່ຖືກ ເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ໂສກະ

[໑໘໕] ປະຣິເທວະ ເປັນແນວໃດ?

ຄື ຄວາມຮ້ອງໄຫ້ ຄວາມໄຫ້ຈົ່ມ ກິຣິຍາທີ່ຮ້ອງໄຫ້ ກິຣິຍາທີ່ໄຫ້ຈົ່ມ ພາວະທີ່ຮ້ອງໄຫ້ ພາວະທີ່ໄຫ້ຈົ່ມຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກ ແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ປະຣິເທວະ

[໑໘໖] ທຸກ ເປັນແນວໃດ?

ຄື ຄວາມທຸກທາງກາຍ ຄວາມບໍ່ສຸກສະບາຍທາງກາຍ ຄວາມສະເຫວີຍອາລົມທີ່ບໍ່ສຸກສະບາຍເປັນທຸກ ອັນເກີດແຕ່ກາຍສຳຜັດ ນີ້ຮຽກວ່າ ທຸກ

[໑໘໗] ໂທມະນັດ ເປັນແນວໃດ?

ຄື ຄວາມທຸກທາງໃຈ ຄວາມບໍ່ສຸກສະບາຍທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສຸກສະບາຍເປັນທຸກ ອັນເກີດແຕ່ມະໂນສຳຜັດ ນີ້ຮຽກວ່າ ໂທມະນັດ

[໑໘໘] ອຸປາຍາດ ເປັນແນວໃດ?

ຄື ຄວາມແຄ້ນ ຄວາມຄັບແຄ້ນ ພາວະທີ່ແຄ້ນ ພາວະທີ່ຄັບແຄ້ນຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ອຸປາຍາດ

[໑໘໙] ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ ເປັນແນວໃດ?

ຄື ການໄປຮ່ວມ ການມາຮ່ວມ ການປະຊຸມຮ່ວມ ການຢູ່ຮ່ວມກັບອາລົມອັນບໍ່ເປັນທີ່ປາຖະໜາ ບໍ່ເປັນທີ່ຮັກແພງ ບໍ່ເປັນທີ່ພໍໃຈຂອງເຂົາໃນໂລກນີ້ ເຊັ່ນ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທຳມາຣົມ ຫຼື ຈາກບຸກຄົນຜູ້ປາຖະໜາແຕ່ສິ່ງທີ່ບໍ່ແມ່ນປະໂຫຍດ ປາຖະໜາ ແຕ່ສິ່ງທີ່ບໍ່ເກື້ອກູນ ປາຖະໜາແຕ່ສິ່ງທີ່ບໍ່ຜາສຸກ ບໍ່ປາຖະໜາຄວາມກະເສມຈາກໂຍຄະຂອງເຂົາ ນີ້ຮຽກວ່າ ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ

[໑໙໐] ການພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ ເປັນແນວໃດ?

ຄື ການບໍ່ໄປຮ່ວມ ການບໍ່ມາຮ່ວມ ການບໍ່ປະຊຸມຮ່ວມ ການບໍ່ຢູ່ຮ່ວມກັບອາລົມ ອັນເປັນທີ່ປາຖະໜາ ເປັນທີ່ຮັກແພງ ເປັນທີ່ພໍໃຈຂອງເຂົາໃນໂລກນີ້ ເຊັ່ນ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທຳມາຣົມ ຫຼື ຈາກບຸກຄົນຜູ້ປາຖະໜາປະໂຫຍດ ປາຖະໜາຄວາມເກື້ອກູນ ປາຖະໜາຄວາມຜາສຸກ ປາຖະໜາຄວາມກະເສມຈາກໂຍຄະຂອງເຂົາ ເຊັ່ນ ມານດາ ບິດາ ອ້າຍ ນ້ອງ

ຊາຍ ເອື້ອຍ ນ້ອງສາວ ມິດ ອຳມາດຫຼືຍາດສາໂລຫິດ ນີ້ຮຽກວ່າ ການພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ

[໑໓໑] ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ເປັນແນວໃດ?

ຄື ເຫຼົ່າສັດຜູ້ມີຄວາມເກີດເປັນທຳມະດາ ເກີດຄວາມປາຖະໜາຂຶ້ນແນວນີ້ວ່າ "ເຮັດແນວໃດນໍ ຂໍເຮົາຢ່າໄດ້ມີຄວາມເກີດເປັນທຳມະດາ ຫຼື ຂໍຄວາມເກີດຢ່າໄດ້ມາເຖິງເຮົາເລີຍ" ຂໍ້ນີ້ບໍ່ເພິ່ງສຳເລັດໄດ້ຕາມຄວາມປາຖະໜາ ນີ້ຮຽກວ່າ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ

ເຫຼົ່າສັດຜູ້ມີຄວາມແກ່ເປັນທຳມະດາ ເກີດຄວາມປາຖະໜາຂຶ້ນຢ່າງນີ້ວ່າ "ເຮັດແນວໃດນໍ ຂໍເຮົາຢ່າໄດ້ມີຄວາມແກ່ເປັນທຳມະດາ ຫຼື ຂໍຄວາມແກ່ຢ່າໄດ້ມາເຖິງເຮົາເລີຍ" ຂໍ້ນີ້ ບໍ່ເພິ່ງສຳເລັດໄດ້ຕາມຄວາມປາຖະໜາ ນີ້ຮຽກວ່າ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ເຫຼົ່າສັດຜູ້ມີຄວາມເຈັບໄຂ້ເປັນທຳມະດາ ฯລฯ ເຫຼົ່າສັດຜູ້ມີຄວາມຕາຍເປັນທຳມະດາ ฯລฯ

ເຫຼົ່າສັດຜູ້ມີຄວາມເສົ້າໂສກ ຄວາມພິໃດຮ່ຳໄຮ ຄວາມທຸກ ຄວາມໂທມະນັດ ແລະຄວາມຄັບແຄ້ນເປັນທຳມະດາ ຕ່າງກໍເກີດຄວາມປາຖະໜາຂຶ້ນຢ່າງນີ້ວ່າ "ເຮັດແນວໃດນໍ ຂໍເຮົາຢ່າໄດ້ເປັນຜູ້ມີຄວາມເສົ້າໂສກ ຄວາມພິໃດຮ່ຳໄຮ ຄວາມທຸກ ຄວາມໂທມະນັດແລະຄວາມຄັບແຄ້ນເປັນທຳມະດາເລີຍ ແລະ ຂໍຄວາມໂສກເສົ້າ ຄວາມຮ່ຳໄຮ ຄວາມທຸກ ຄວາມໂທມະນັດແລະຄວາມຄັບແຄ້ນຢ່າໄດ້ມາເຖິງເຮົາເລີຍ" ຂໍ້ນີ້ບໍ່ເພິ່ງສຳເລັດໄດ້ຕາມຄວາມປາຖະໜາ ນີ້ຮຽກວ່າ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ

[໑໓໒] ວ່າໂດຍຫຍໍ້ ອຸປາທານຂັນ[໑] ໕ ປະການເປັນທຸກ ເປັນແນວໃດ?

ຄື ຣູປູປາທານະຂັນ (ອຸປາທານຂັນຄືຮູບ) ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ) ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ) ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ) ແລະ ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ) ເຫຼົ່ານີ້ຮຽກວ່າ ວ່າໂດຍຫຍໍ້ ອຸປາທານຂັນ ໕ ປະການເປັນທຸກ

ນີ້ຮຽກວ່າ ທຸກຂະອະຣິຍະສັດ

## ສະມຸທະຍະສັດຈະນິດເທດ

[໑໓໓] ທຸກຂະສະມຸທະຍະອະຣິຍະສັດ ເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ໄດ້ແກ່ ກາມຕັນຫາ ພະວະຕັນຫາ ແລະ ວິພະວະຕັນຫາ

ກໍຕັນຫານີ້ແລ ເມື່ອເກີດຂຶ້ນ ເກີດຢູ່ໃສ ເມື່ອຕັ້ງຢູ່ ຕັ້ງຢູ່ບ່ອນໃດ?

ຄື ປິຍະຮູບສາຕະຮູບໃດມີຢູ່ໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ປິຍະຮູບສາຕະຮູບນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ປິຍະຮູບສາຕະຮູບນີ້

ກໍອັນໃດ? ເປັນປິຍະຮູບສາຕະຮູບໃນໂລກ

ຄື ຈັກຂຸເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ຈັກຂຸນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຈັກຂຸນີ້ ໂສຕະເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຄານະເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຊິວຫາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ກາຍເປັນປິຍະຮູບສາຕະຮູບໃນໂລກ ຯລຯ ມະໂນເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ມະໂນນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ມະໂນນີ້

ຮູບເປັນປິຍະຮູບສາຕະຮູບໃນໂລກ ຯລຯ ສຽງເປັນປິຍະຮູບສາຕະຮູບໃນໂລກ ຯລຯ ກິ່ນເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຣົດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ໂຜດຖັບພະເປັນປິຍະຮູບສາຕະຮູບໃນໂລກ ຯລຯ ທໍາມາຣົມເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ທໍາມາຣົມນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ທໍາມາຣົມນີ້

ຈັກຂຸວິນຍານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ໂສຕະວິນຍານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຄານະວິນຍານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຊິວຫາວິນຍານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ກາຍວິນຍານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ມະໂນວິນຍານເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ມະໂນວິນຍານນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ມະໂນວິນຍານນີ້

ຈັກຂຸສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ໂສຕະສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຄານະສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຊິວຫາສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ກາຍສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ມະໂນສໍາຜັສເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ມະໂນສໍາຜັດນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ມະໂນສໍາຜັດນີ້

ເວທະນາທີ່ເກີດຈາກຈັກຂຸສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ເວທະນາທີ່ເກີດຈາກໂສຕະສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ເວທະນາທີ່ເກີດຈາກຄານະສໍາຜັດເປັນປິຍະຮູບສາຕະຮູບ ໃນໂລກ ຯລຯ ເວທະນາທີ່ເກີດຈາກຊິວຫາສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ເວທະນາທີ່ເກີດຈາກກາຍສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ເວທະນາທີ່

ເກີດຈາກມະໂນສຳຜັດເປັນປີຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ເວທະນາເຊິ່ງ ເກີດຈາກມະໂນສຳຜັດນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ເວທະນາເຊິ່ງເກີດຈາກມະໂນສຳຜັດນີ້

ຮູບສັນຍາ (ຄວາມໝາຍຮູ້ຮູບ) ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ສັດທະສັນຍາ ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ຄັນທະສັນຍາເປັນປີຍະຮູບສາຕະຮູບໃນໂລກ ໆລໆ ຣະ ສະສັນຍາເປັນປີຍະຮູບສາຕະຮູບໃນໂລກ ໆລໆ ໂຜດທັບພະສັນຍາເປັນປີຍະຮູບສາຕະຮູບໃນ ໂລກ ໆລໆ ທຳມະສັນຍາເປັນປີຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳມະ ສັນຍານີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ທຳມະສັນຍານີ້

ຮູບສັນເຈຕະນາ (ຄວາມຈົງໃຈໃນຮູບ) ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ສັດທະ ສັນເຈຕະນາເປັນປີຍະຮູບສາຕະຮູບໃນໂລກ ໆລໆ ຄັນທະສັນເຈຕະນາເປັນປີຍະຮູບສາຕະຮູບ ໃນໂລກ ໆລໆ ຣະສະສັນເຈຕະນາ ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ໂຜດທັບພະສັນເຈ ຕະນາເປັນປີຍະຮູບສາຕະຮູບໃນໂລກ ໆລໆ ທຳມະສັນເຈຕະນາເປັນປີຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳມະສັນເຈຕະນານີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ທຳມະສັນເຈຕະນານີ້

ຮູບຕັນຫາ (ຄວາມທະຍານຢາກໃນຮູບ) ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ສັດທະ ຕັນຫາ ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ຄັນທະຕັນຫາເປັນປີຍະຮູບສາຕະຮູບໃນໂລກ ໆລໆ ຣະສະຕັນຫາເປັນ ປີຍະຮູບສາຕະຮູບໃນໂລກ ໆລໆ ໂຜດທັບພະຕັນຫາເປັນປີຍະຮູບ ສາຕະຮູບໃນໂລກ ໆລໆ ທຳມະຕັນຫາເປັນ ປີຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍ ເກີດທີ່ທຳມະຕັນຫານີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ ທຳມະຕັນຫານີ້

ຮູບວິຕົກ (ຄວາມນຶກເຖິງຮູບ) ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ສັດທະວິຕົກເປັນປີ ຍະຮູບສາຕະຮູບໃນໂລກ ໆລໆ ຄັນທະວິຕົກເປັນປີຍະຮູບສາຕະຮູບໃນໂລກ ໆລໆ ຣະສະວິຕົກ ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ໂຜດທັບພະວິຕົກເປັນປີຍະຮູບສາຕະຮູບໃນໂລກ ໆລໆ ທຳມະວິຕົກເປັນປີຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳມະວິຕົກນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ທຳມະວິຕົກນີ້

ຮູບວິຈານ (ຄວາມຕອງເຖິງຮູບ) ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ສັດທະວິຈານ ເປັນປີຍະຮູບສາຕະຮູບໃນໂລກ ໆລໆ ຄັນທະວິຈານເປັນປີຍະຮູບສາຕະຮູບໃນໂລກ ໆລໆ ຣະ ສະວິຈານເປັນປີຍະຮູບສາຕະຮູບໃນໂລກ ໆລໆ ໂຜດທັບພະວິຈານເປັນປີຍະຮູບສາຕະຮູບໃນ ໂລກ ໆລໆ ທຳມະວິຈານເປັນປີຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳມະວິ ຈານນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ທຳມະວິຈານນີ້

ນີ້ຮຽກວ່າ ທຸກຂະສະມຸທະຍະອະຣິຍະສັດ

## ນິໂຣທະສັດຈະນິດເທດ

[໑໓໔] ທຸກຂະນິໂຣທະອະຣິຍະສັດ ເປັນແນວໃດ?

ຄື ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະຫຼະ ຄວາມສະຫຼະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ

ກໍຕັນຫານີ້ເມື່ອລະ ລະຢູ່ໃສ ເມື່ອດັບ ດັບຢູ່ໃສ?

ຄື ປິຍະຣູບສາຕະຣູບໃດມີຢູ່ໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ປິຍະຣູບສາຕະຣູບນີ້ ເມື່ອດັບກໍດັບທີ່ປິຍະຣູບສາຕະຣູບນີ້

ກໍອັນໃດ ເປັນປິຍະຣູບສາຕະຣູບໃນໂລກ

ຄື ຈັກຂຸເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຈັກຂຸນີ້ ເມື່ອດັບ ກໍດັບທີ່ຈັກຂຸນີ້ ໂສຕະເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຄານະເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຊິວຫາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ກາຍເປັນປິຍະຣູບສາຕະຣູບໃນໂລກ ຯລຯ ມະໂນເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ມະໂນນີ້ ເມື່ອດັບ ກໍດັບທີ່ມະໂນນີ້

ຣູບເປັນປິຍະຣູບສາຕະຣູບໃນໂລກ ຯລຯ ສຽງເປັນປິຍະຣູບສາຕະຣູບໃນໂລກ ຯລຯ ກິ່ນເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຣົດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ໂຜດຖັບພະເປັນປິຍະຣູບສາຕະຣູບໃນໂລກ ຯລຯ ທຳມາຣົມເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມາຣົມນີ້ ເມື່ອດັບ ກໍດັບທີ່ທຳມາຣົມນີ້

ຈັກຂຸວິນຍານເປັນປິຍະຣູບສາຕະຣູບໃນໂລກ ຯລຯ ໂສຕະວິນຍານເປັນປິຍະຣູບສາຕະຣູບ ໃນໂລກ ຯລຯ ຄານະວິນຍານເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຊິວຫາວິນຍານເປັນປິຍະຣູບສາຕະຣູບໃນໂລກ ຯລຯ ກາຍວິນຍານເປັນປິຍະຣູບສາຕະຣູບໃນໂລກ ຯລຯ ມະໂນວິນຍານເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ມະໂນວິນຍານນີ້ ເມື່ອດັບ ກໍດັບທີ່ມະໂນວິນຍານນີ້

ຈັກຂຸສຳຜັດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ໂສຕະສຳຜັດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຄານະສຳຜັດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຊິວຫາສຳຜັດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ກາຍສຳຜັດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ມະໂນສຳຜັສເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ມະໂນສຳຜັດນີ້ ເມື່ອດັບ ກໍດັບທີ່ມະໂນສຳຜັດນີ້

ເວທະນາທີ່ເກີດຈາກຈັກຂຸສຳຜັດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ເວທະນາທີ່ເກີດຈາກໂສຕະສຳຜັດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ເວທະນາທີ່ເກີດຈາກຄານະສຳຜັດເປັນ

ປິຍະຮູບສາຕະຮູບ ໃນໂລກ ຯລຯ ເວທະນາທີ່ເກີດຈາກຊິວຫາສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ເວທະນາທີ່ເກີດຈາກ ກາຍສໍາຜັດເປັນປິຍະຮູບສາຕະຮູບໃນໂລກ ຯລຯ ເວທະນາທີ່ເກີດຈາກມະໂນສໍາຜັສເປັນປິຍະຮູບສາຕະຮູບ ໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ເວທະນາເຊິ່ງເກີດຈາກມະໂນສໍາຜັສນີ້ ເມື່ອດັບ ກໍດັບທີ່ເວທະນາເຊິ່ງເກີດຈາກມະໂນສໍາຜັສນີ້

ຮູບສັນຍາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ສັດທະສັນຍາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຄັນທະສັນຍາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຣະສະສັນຍາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ໂຜດທັບພະສັນຍາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ທໍາມະສັນຍາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ທໍາມະສັນຍານີ້ ເມື່ອດັບ ກໍດັບທີ່ທໍາມະສັນຍານີ້

ຮູບສັນເຈຕະນາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ສັດທະສັນເຈຕະນາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຄັນທະສັນເຈຕະນາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຣະສະສັນເຈຕະນາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ໂຜດທັບພະສັນເຈຕະນາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ທໍາມະສັນເຈຕະນາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ທໍາມະສັນເຈຕະນານີ້ ເມື່ອດັບ ກໍດັບທີ່ທໍາມະສັນເຈຕະນານີ້

ຮູບຕັນຫາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ສັດທະຕັນຫາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຄັນທະຕັນຫາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຣະສະຕັນຫາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ໂຜດທັບພະຕັນຫາເປັນປິຍະຮູບສາຕະຮູບໃນໂລກ ຯລຯ ທໍາມະຕັນຫາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ທໍາມະຕັນຫານີ້ ເມື່ອດັບ ກໍດັບທີ່ທໍາມະຕັນຫານີ້

ຮູບວິຕົກເປັນປິຍະຮູບສາຕະຮູບໃນໂລກ ຯລຯ ສັດທະວິຕົກເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຄັນທະວິຕົກເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຣະສະວິຕົກເປັນປິຍະຮູບສາຕະຮູບໃນໂລກ ຯລຯ ໂຜດທັບພະວິຕົກເປັນປິຍະຮູບສາຕະຮູບໃນໂລກ ຯລຯ ທໍາມະວິຕົກເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ທໍາມະວິຕົກນີ້ ເມື່ອດັບກໍດັບທີ່ທໍາມະວິຕົກນີ້

ຮູບວິຈານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ສັດທະວິຈານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຄັນທະວິຈານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ຣະສະວິຈານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ໂຜດທັບພະວິຈານເປັນປິຍະຮູບສາຕະຮູບໃນໂລກ ຯລຯ ທໍາມະວິຈານເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ທໍາມະວິຈານນີ້ ເມື່ອດັບ ກໍດັບທີ່ທໍາມະວິຈານນີ້

ນີ້ຮຽກວ່າ ທຸກຂະນິໂຣທະອະຣິຍະສັດ

## ມັກຄະສັດຈະນິດເທດ

[໑໓໕] ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ເປັນແນວໃດ?

ຄື ອະຣິຍະມັກມີອົງ ๘ ນີ້ນັ້ນແລ ໄດ້ແກ່

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ດຳຣິຖືກ)
໓. ສຳມາວາຈາ (ເຈລະຈາຖືກ)
໔. ສຳມາກຳມັນຕະ (ກະທຳຖືກ)
໕. ສຳມາອາຊີວະ (ລ້ຽງຊີບຖືກ)
໖. ສຳມາວາຍາມະ (ພະຍາຍາມຖືກ)
໗. ສຳມາສະຕິ (ຣະນຶກຖືກ)
໘. ສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

ສຳມາທິດຖິ ເປັນແນວໃດ?

ຄື ຄວາມຮູ້ໃນທຸກ ຄວາມຮູ້ໃນທຸກຂະສະມຸໄທ ຄວາມຮູ້ໃນທຸກຂະນິໂຣທະ ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ນີ້ຮຽກວ່າ ສຳມາທິດຖິ

ສຳມາສັງກັບປະ ເປັນແນວໃດ?

ຄື ຄວາມດຳຣິໃນການອອກຈາກກາມ ຄວາມດຳຣິໃນການບໍ່ພະຍາບາດ ຄວາມດຳຣິໃນການບໍ່ບຽດບຽນ ນີ້ຮຽກວ່າ ສຳມາສັງກັບປະ

ສຳມາວາຈາ ເປັນແນວໃດ?

ຄື ເຈຕະນາງົດເວັ້ນຈາກການເວົ້າຕົວະ ເຈຕະນາງົດເວັ້ນຈາກການເວົ້າສັບສໍ່ ເຈຕະນາງົດເວັ້ນຈາກການເວົ້າຄຳຫຍາບ ເຈຕະນາງົດເວັ້ນຈາກການເວົ້າບໍ່ມີສາຣະ ນີ້ຮຽກວ່າສຳມາວາຈາ

ສຳມາກຳມັນຕະ ເປັນແນວໃດ?

ຄື ເຈຕະນາງົດເວັ້ນຈາກການຂ້າສັດ ເຈຕະນາງົດເວັ້ນຈາກການລັກຊັບ ເຈຕະນາງົດເວັ້ນຈາກການປະພຶດຜິດໃນກາມ ນີ້ຮຽກວ່າ ສຳມາກຳມັນຕະ

ສຳມາອາຊີວະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ລະມິດສາອາຊີວະແລ້ວ ສຳເລັດການລ້ຽງຊີບດ້ວຍສຳມາອາຊີວະ ນີ້ຮຽກວ່າ ສຳມາອາຊີວະ

ສຳມາວາຍາມະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ສ້າງສັນທະພະຍາຍາມຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ[๑] ນີ້ຮຽກວ່າ ສຳມາວາຍາມະ

ສຳມາສະຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ນີ້ຮຽກວ່າ ສຳມາສະຕິ

ສຳມາສະມາທິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກ ອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ສຳມາສະມາທິ

ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

[໑໓໗] ດ້ວຍວິທີນີ້ ພິກຂຸຊື່ວ່າ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ພິຈາລະນາ

ເຫັນທຳໃນທຳທັງຫຼາຍພາຍນອກຢູ່ ຫຼື ພິຈາລະນາເຫັນທຳໃນທຳທັງຫຼາຍທັງພາຍໃນທັງພາຍນອກຢູ່ ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ ຫຼື ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳ ເປັນເຫດດັບໃນທຳທັງຫຼາຍຢູ່

ຫຼື ວ່າ ພິກຂຸນັ້ນມີສະຕິຜາກົດຢູ່ສະເພາະໜ້າວ່າ "ທຳມີຢູ່" ກໍພຽງເພື່ອອາໄສ ຈະເລີນຍານ ຈະເລີນສະຕິທີ່ນັ້ນ ບໍ່ອາໄສ (ຕັນຫາແລະທິດຖິ)ຢູ່ ບໍ່ຍຶດໝັ້ນຖືໝັ້ນອັນໃດ ໆ ໃນໂລກ ພິກຂຸຈຶ່ງຊື່ວ່າ ພິຈາລະນາເຫັນທຳໃນທຳທັງຫຼາຍ ຄື ອະຣິຍະສັດ ໔ ຢູ່ ແນວນີ້ແລ

**ໝວດສັດຈະ ຈົບ**

**ທຳມານຸປັດສະນາສະຕິປັດຖານ ຈົບ**

## ອານິສົງແຫ່ງການຈະເລີນສະຕິປັດຖານ ໔

[໑໓໗] ພິກຂຸທັງຫຼາຍ

໑. ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໗ ປີ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

໒. ໗ ປີ ຈົ່ງຍົກໄວ້[໑] ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໖ ປີ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

໓. ໖ ປີ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໕ ປີ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

໔. ໕ ປີ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໔ ປີ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

໕. ໔ ປີ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໓ ປີ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

໗. ໖ ປີ ຈົ່ງຍົກໄວ້ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໔ ປີ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

໗. ໔ ປີ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໑ ປີ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

໘. ໑ ປີ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໗ ເດືອນ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໙. ໗ ເດືອນ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໖ ເດືອນ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

໑໐. ໖ ເດືອນ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໕ ເດືອນ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໑໑. ໕ ເດືອນ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໔ ເດືອນ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໑໒. ໔ ເດືອນ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໓ ເດືອນ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໑໓. ໓ ເດືອນ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໒ ເດືອນ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໑໔. ໒ ເດືອນ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໑ ເດືອນ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໑໕. ໑ ເດືອນ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດເຄິ່ງເດືອນ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

໑໖. ເຄິ່ງເດືອນ ຈົ່ງຍົກໄວ້ກ່ອນ ບຸກຄົນຜູ້ຈະເລີນສະຕິປັດຖານ ໔ ຕະຫຼອດ ໗ ວັນ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນອະນາຄາມີ

[໑໓໙] ພິກຂຸທັງຫຼາຍ ທາງນີ້ເປັນທາງສາຍດ່ຽວ ເພື່ອຄວາມບໍລິສຸດຂອງເຫຼົ່າສັດ ເພື່ອລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ ທາງນີ້ ຄື ສະຕິປັດຖານ ໔ ປະການ ເຮົາອາໄສທາງສາຍດ່ຽວນີ້ແລ້ວ ຈຶ່ງກ່າວຄຳດັ່ງພັນນາມາແນວນີ້”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາສະຕິປັດຖານສູດທີ ໑໐ ຈົບ**

**ມູລະປະຣິຍາຍະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ມູລະປະຣິຍາຍະສູດ | ໒. ສັບພາສະວະສູດ |
| ໓. ທຳມະທາຍາດສູດ | ໔. ພະຍະເພຣະວະສູດ |
| ໕. ອະນັງຄະນະສູດ | ໖. ອາກັງເຂີຍຍະສູດ |
| ໗. ວັດຖູປະມະສູດ | ໘. ສັນເລຂະສູດ |
| ໙. ສຳມາທິດຖິສູດ | ໑໐. ມະຫາສະຕິປັດຖານສູດ |

ຂໍທ່ານທັງຫຼາຍຈົ່ງຟັງພຣະສູດອັນມີໃນຕ່າງ ໆ
ເປັນທຳມະຊາດບໍ່ແກ່ ບໍ່ຕາຍ ໃຫ້ບັນລຸອະມະຕະທຳ
ສະແດງໄຂທັງມັກແລະຜົນ ອັນບັນເທົາທຸກ
ມີປະໂຫຍດເກື້ອກູນ ກໍ່ໃຫ້ເກີດມະຫາຣິດຫຼາຍພັນໄນ
ອັນນຳມາເຊິ່ງປິຕິຫຼວງຫຼາຍ ທຳຄວາມຮ້ອນຮົນຍ້ອນໄຟ ໓ ຊະນິດ
(ໄຟຄືຣາຄະ ໄຟຄືໂທສະ ໄຟຄືໂມຫະ) ໃຫ້ດັບສູນ

ເໝືອນວະສຸທາຣາຫຼັ່ງໄຫຼຮໍາດັບຮ້ອນແຫ່ງພື້ນພະສຸທາສັນນັ້ນ

ພຣະສູດອັນປະເສີດສຸດທ້າຍ (ແຫ່ງວັກ)

ເໝືອນໂອສົດອັນກໍາຈັດພະຍາດຄືກິເລດ ມີຣົດຫວານລະມຸນ
ກໍ່ໃຫ້ເກີດຄວາມຍິນດີອັນໃຫຍ່ຫຼວງແກ່ເຫຼົ່າເທວະດາແລະໝູ່ມະນຸດ
ອັນພຣະອັດຖະກະຖາຈານປະດິດສະຖານໄວ້ແລ້ວ

ອັນໜຶ່ງ ພຣະສູດທີ່ຊື່ເວີຍຍາກະຣະນະ
(ອົງຄຸນໜຶ່ງຂອງນະວັງຄະສັດຖຸສາດ)
ທ່ານກໍປະດິດສະຖານໄວ້ເຖິງ ໘໕໐ ສູດ
ເພື່ອທົດສອບເຫຼົ່າສະມະນະສາກະຍະບຸດ

ຂໍທ່ານທັງຫຼາຍເຫຼົ່າອື່ນຈາກຜູ້ທີ່ກ່າວແລ້ວນັ້ນ
ຈົ່ງມີນໍ້າໜຶ່ງໃຈດຽວກັນ ຊົມເຊີຍພຣະສູດ
ອັນມີຄວາມບັນເທີງເປັນສ່ວນສຸດ
ໃນວັກອັນສະແດງຫົນທາງປະຕິບັດຕ່າງ ໆ ໂດຍລໍາດັບຢູ່ເທີ້ນ

# ໘. ສີຫະນາທະວັກ

### ໝວດວ່າດ້ວຍການບັນລືສີຫະນາດ

## ໑. ຈູລະສີຫະນາທະສູດ

### ວ່າດ້ວຍການບັນລືສີຫະນາດ ສູດນ້ອຍ

### ສະມະນະ ໔ ຈຳພວກ

[໑໓໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ສະມະນະທີ ໑ ມີຢູ່ໃນທຳວິໄນນີ້ທີ່ນັ້ນ ສະມະນະທີ ໒ ມີຢູ່ໃນທຳວິໄນນີ້ ສະມະນະທີ ໓ ມີຢູ່ໃນທຳວິໄນນີ້ ສະມະນະທີ ໔[1] ກໍມີຢູ່ໃນທຳວິໄນນີ້ ລັດທິຂອງສາດສະດາອື່ນວ່າງເປົ່າຈາກສະມະນະທັງຫຼາຍຜູ້ຮູ້ທົ່ວເຖິງ ທ່ານທັງຫຼາຍຈົ່ງບັນລືສີຫະນາດ[2] ໂດຍຊອບແນວນີ້ແລ

[໑໔໐] ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກ (ເຈົ້າລັດທິອື່ນ) ໃນໂລກນີ້ ຈະເພິ່ງກ່າວແນວນີ້ວ່າ "ອັນໃດບໍ? ເປັນຄວາມໝັ້ນໃຈຂອງພວກທ່ານ ອັນໃດເປັນກຳລັງໃຈຂອງພວກທ່ານ ພວກທ່ານພິຈາລະນາເຫັນອັນໃດໃນຕົນຈຶ່ງກ່າວແນວນີ້ວ່າ "ສະມະນະທີ ໑ ມີຢູ່ໃນທຳວິໄນນີ້ທີ່ນັ້ນ ສະມະນະທີ ໒ ມີຢູ່ໃນທຳວິໄນນີ້ ສະມະນະທີ ໓ ມີຢູ່ໃນທຳວິໄນນີ້ ສະມະນະທີ ໔ ກໍມີຢູ່ໃນທຳວິໄນນີ້ ລັດທິຂອງສາດສະດາອື່ນວ່າງເປົ່າຈາກສະມະນະທັງຫຼາຍຜູ້ຮູ້ທົ່ວເຖິງທຳ"

ທ່ານທັງຫຼາຍ ເພິ່ງກ່າວຕອບພວກອັນຍະເດຍຣະຖີປະຣິພາຊົກຜູ້ມີວາທະແນວນັ້ນ ແນວນີ້ວ່າ "ຜູ້ມີອາຍຸທັງຫຼາຍ ມີທຳ ໔ ປະການທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ ຊົງເຫັນ ຊົງເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບຕັດໄວ້ແລ້ວ ເຊິ່ງເຮົາທັງຫຼາຍພິຈາລະນາເຫັນ (ວ່າມີ) ໃນຕົນ ຈຶ່ງກ່າວແນວນີ້ວ່າ "ສະມະນະທີ ໑ ມີຢູ່ໃນທຳວິໄນນີ້ທີ່ນັ້ນ ສະມະນະທີ ໒ ມີຢູ່ໃນທຳວິໄນນີ້ ສະມະນະທີ ໓ ມີຢູ່ໃນ ທຳວິໄນນີ້ ສະມະນະທີ ໔ ກໍມີຢູ່ໃນທຳວິໄນ

ນີ້ ລັດທິຂອງສາດສະດາອື່ນວ່າງເປົ່າຈາກສະມະນະທັງຫຼາຍຜູ້ຮູ້ທົ່ວເຖິງທຳ"

ທຳ ໔ ປະການ ອັນໃດແດ່ ຄື

໑. ຄວາມເຫຼື້ອມໃສໃນສາດສະດາ
໒. ຄວາມເຫຼື້ອມໃສໃນທຳ
໓. ຄວາມເປັນຜູ້ເຮັດໃຫ້ບໍລິບູນໃນສິນ
໔. ທັງຄະຫັດແລະບັນພະຊິດ ຜູ້ປະພຶດທຳຮ່ວມກັນເປັນທີ່ຮັກເປັນທີ່ພໍໃຈຂອງເຮົາທັງຫຼາຍ

ທຳ ໔ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ຊົງເຫັນ ຊົງເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບຕັດໄວ້ແລ້ວ ເຊິ່ງເຮົາທັງຫຼາຍພິຈາລະນາເຫັນ (ວ່າມີ) ໃນຕົນຈຶ່ງກ່າວແນວນີ້ວ່າ "ສະມະນະທີ ໑ ມີຢູ່ໃນທຳວິໄນນີ້ເທົ່ານັ້ນ ສະມະນະທີ ໒ ມີຢູ່ໃນທຳວິໄນນີ້ ສະມະນະທີ ໓ ມີຢູ່ໃນທຳວິໄນນີ້ ສະມະນະທີ ໔ ກໍມີຢູ່ໃນທຳວິໄນນີ້ ລັດທິຂອງສາດສະດາອື່ນວ່າງເປົ່າຈາກສະມະນະທັງຫຼາຍຜູ້ຮູ້ທົ່ວເຖິງທຳ"

[໑໔໑] ເປັນໄປໄດ້ທີ່ພວກອັນຍະເດຍຣະຖີປະຣິພາຊົກຈະເພິ່ງກ່າວແນວນີ້ວ່າ "ຜູ້ໃດເປັນສາດສະດາຂອງພວກເຮົາ ແມ່ນພວກເຮົາກໍມີຄວາມເຫຼື້ອມໃສໃນສາດສະດານັ້ນ ອັນໃດເປັນທຳຂອງພວກເຮົາ ແມ່ນພວກເຮົາກໍມີຄວາມເຫຼື້ອມໃສໃນທຳນັ້ນ ຂໍ້ໃດເປັນສິນຂອງພວກເຮົາ ແມ່ນພວກເຮົາກໍເປັນຜູ້ເຮັດໃຫ້ບໍລິບູນໃນສິນນັ້ນ ແມ່ນທັງຄະຫັດ ແລະ ບັນພະຊິດຜູ້ປະພຶດທຳຮ່ວມກັນ ກໍເປັນທີ່ຮັກເປັນທີ່ພໍໃຈຂອງພວກເຮົາ ໃນຂໍ້ນີ້ມີຄວາມແປກແຕກຕ່າງກັນແນວໃດ? ມີຄວາມມຸ່ງໝາຍແນວໃດ? ແລະ ມີການກະທຳຕ່າງກັນແນວໃດ? ລະຫວ່າງພວກທ່ານກັບພວກເຮົາ"

ທ່ານທັງຫຼາຍ ເພິ່ງກ່າວຕອບພວກອັນຍະເດຍຣະຖີປະຣິພາຊົກຜູ້ມີວາທະແນວນັ້ນ ແນວນີ້ວ່າ "ຜູ້ມີອາຍຸທັງຫຼາຍ ຈຸດມຸ່ງໝາຍ[1] ມີຢ່າງດຽວ ຫຼື ມີຫຼາຍຢ່າງ" ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຈະຕອບຢ່າງຖືກຕ້ອງກໍຈະຕອບແນວນີ້ວ່າ "ຈຸດມຸ່ງໝາຍມີຢ່າງດຽວເທົ່ານັ້ນ ບໍ່ມີຫຼາຍຢ່າງ"

ທ່ານທັງຫຼາຍເພິ່ງກ່າວແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສຳລັບຜູ້ມີຣາຄະ (ຄວາມກຳໜັດ) ຫຼືຜູ້ປາສະຈາກຣາຄະ" ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຈະຕອບຢ່າງຖືກຕ້ອງກໍຈະຕອບແນວນີ້ວ່າ "ຈຸດມຸ່ງໝາຍນັ້ນເປັນຈຸດມຸ່ງໝາຍສຳລັບຜູ້ປາສະຈາກຣາຄະ ບໍ່ແມ່ນສຳລັບຜູ້ມີຣາຄະ"

ທ່ານທັງຫຼາຍເພິ່ງກ່າວແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສຳລັບຜູ້ມີໂທສະ

(ຄວາມຄິດປະທຸດສະຮ້າຍ) ຫຼື ຜູ້ປາສະຈາກໂທສະ" ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຈະຕອບຢ່າງຖືກຕ້ອງກໍຈະຕອບແນວນີ້ວ່າ "ຈຸດມຸ່ງໝາຍນັ້ນເປັນຈຸດມຸ່ງໝາຍສໍາລັບຜູ້ປາສະຈາກໂທສະ ບໍ່ແມ່ນສໍາລັບຜູ້ມີໂທສະ"

ທ່ານທັງຫຼາຍເພິ່ງກ່າວແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສໍາລັບຜູ້ມີໂມຫະ (ຄວາມຫຼົງ) ຫຼື ຜູ້ປາສະຈາກໂມຫະ" ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຈະຕອບຢ່າງຖືກຕ້ອງກໍຈະຕອບແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສໍາລັບຜູ້ປາສະຈາກໂມຫະ ບໍ່ແມ່ນສໍາລັບຜູ້ມີໂມຫະ"

ທ່ານທັງຫຼາຍເພິ່ງກ່າວແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສໍາລັບຜູ້ມີຕັນຫາ (ຄວາມທະຍານຢາກ) ຫຼື ຜູ້ປາສະຈາກຕັນຫາ" ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຈະຕອບຢ່າງຖືກຕ້ອງກໍຈະຕອບແນວນີ້ວ່າ "ຈຸດມຸ່ງໝາຍນັ້ນເປັນຈຸດມຸ່ງໝາຍສໍາລັບຜູ້ປາສະຈາກຕັນຫາ ບໍ່ແມ່ນສໍາລັບຜູ້ມີຕັນຫາ"

ທ່ານທັງຫຼາຍເພິ່ງກ່າວແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສໍາລັບຜູ້ມີອຸປາທານ (ຄວາມຍຶດໝັ້ນ) ຫຼື ຜູ້ປາສະຈາກອຸປາທານ" ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຈະຕອບຢ່າງຖືກຕ້ອງກໍຈະຕອບແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສໍາລັບຜູ້ປາສະຈາກອຸປາທານ ບໍ່ແມ່ນສໍາລັບຜູ້ມີອຸປາທານ"

ທ່ານທັງຫຼາຍເພິ່ງກ່າວແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສໍາລັບຜູ້ຮູ້ແຈ້ງ ຫຼືຜູ້ບໍ່ຮູ້ແຈ້ງ" ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຈະຕອບຢ່າງຖືກຕ້ອງກໍຈະຕອບແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສໍາລັບຜູ້ຮູ້ແຈ້ງ ບໍ່ແມ່ນສໍາລັບຜູ້ບໍ່ຮູ້ແຈ້ງ"

ທ່ານທັງຫຼາຍເພິ່ງກ່າວແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສໍາລັບຜູ້ຍິນດີຍິນຮ້າຍ ຫຼື ຜູ້ບໍ່ຍິນດີບໍ່ຍິນຮ້າຍ" ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຈະຕອບຢ່າງຖືກຕ້ອງກໍຈະຕອບແນວນີ້ວ່າ "ຈຸດມຸ່ງໝາຍນັ້ນເປັນຈຸດມຸ່ງໝາຍສໍາລັບຜູ້ບໍ່ຍິນດີບໍ່ຍິນຮ້າຍ ບໍ່ແມ່ນສໍາລັບຜູ້ຍິນດີຍິນຮ້າຍ"

ທ່ານທັງຫຼາຍເພິ່ງກ່າວແນວນີ້ວ່າ "ຈຸດມຸ່ງໝາຍນັ້ນເປັນຈຸດມຸ່ງໝາຍສໍາລັບຜູ້ພໍໃຈໃນທໍາອັນເປັນເຫດໃຫ້ລ້າຊ້າ ຜູ້ຍິນດີໃນທໍາອັນເປັນເຫດໃຫ້ລ້າຊ້າ ຫຼື ຜູ້ພໍໃຈໃນທໍາອັນບໍ່ເປັນເຫດໃຫ້ລ້າຊ້າ ຜູ້ຍິນດີໃນທໍາອັນບໍ່ເປັນເຫດໃຫ້ລ້າຊ້າ" ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຈະຕອບຢ່າງຖືກຕ້ອງກໍຈະຕອບແນວນີ້ວ່າ "ຈຸດມຸ່ງໝາຍນັ້ນ ເປັນຈຸດມຸ່ງໝາຍສໍາລັບຜູ້ພໍໃຈໃນທໍາອັນບໍ່ເປັນເຫດໃຫ້ລ້າຊ້າ ຜູ້ຍິນດີໃນທໍາອັນບໍ່ເປັນເຫດໃຫ້ລ້າຊ້າ ບໍ່ແມ່ນສໍາລັບຜູ້ພໍໃຈໃນທໍາອັນເປັນເຫດໃຫ້ລ້າຊ້າ ຜູ້ຍິນດີໃນທໍາອັນເປັນເຫດໃຫ້ລ້າຊ້າ"

## ທິດຖິ ໒

[໑໔໒] ພິກຂຸທັງຫຼາຍ ທິດຖິ ໒ ປະການນີ້ ຄື (໑) ພະວະທິດຖິ[១] (໒) ວິພະວະທິດຖິ[២] ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຍຶດຕິດ ເຂົ້າເຖິງ ເກາະຕິດພະວະທິດຖິ ສະມະນະ ຫຼື ພາມເຫຼົ່ານັ້ນ ຊື່ວ່າ ເປັນຜູ້ຍິນຮ້າຍຕໍ່ວິພະວະທິດຖິ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຍຶດຕິດ ເຂົ້າເຖິງ ເກາະຕິດວິພະວະທິດຖິ ສະມະນະຫຼືພາມເຫຼົ່ານັ້ນ ຊື່ວ່າ ເປັນຜູ້ຍິນຮ້າຍຕໍ່ພະວະທິດຖິ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ອຸບາຍເຄື່ອງກຳຈັດທິດຖິ ໒ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ຊື່ວ່າເປັນຜູ້ມີຣາຄະ ມີໂທສະ ມີໂມຫະ ມີຕັນຫາ

ມີອຸປາທານ ເປັນຜູ້ບໍ່ຮູ້ແຈ້ງ ເປັນຜູ້ຍິນດີຍິນຮ້າຍ ພໍໃຈໃນທຳອັນເປັນເຫດໃຫ້ລ້າຊ້າ ຍິນດີໃນທຳອັນເປັນເຫດໃຫ້ລ້າຊ້າ ເຮົາກ່າວວ່າ “ພວກເຂົາບໍ່ພົ້ນຈາກຊາດ (ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ບໍ່ພົ້ນ ຈາກທຸກ” ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ອຸບາຍເຄື່ອງກຳຈັດທິດຖິ ໒ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ຊື່ວ່າເປັນຜູ້ປາສະຈາກຣາຄະ ປາສະຈາກໂທສະ ປາສະຈາກໂມຫະ ປາສະຈາກຕັນຫາ ບໍ່ມີອຸປາທານ ເປັນຜູ້ຮູ້ແຈ້ງ ເປັນຜູ້ບໍ່ຍິນດີ ບໍ່ຍິນຮ້າຍ ເປັນຜູ້ພໍໃຈໃນທຳອັນບໍ່ເປັນເຫດໃຫ້ລ້າຊ້າ ຍິນດີໃນທຳອັນບໍ່ເປັນເຫດໃຫ້ລ້າຊ້າ ເຮົາກ່າວວ່າ “ພວກເຂົາພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ພົ້ນຈາກທຸກ”

## ອຸປາທານ ໔

[໑໔໓] ພິກຂຸທັງຫຼາຍ ອຸປາທານ ໔ ປະການນີ້

ອຸປາທານ ໔ ປະການ ອັນໃດແດ່ ຄື

໑. ກາມຸປາທານ (ຄວາມຍຶດໝັ້ນໃນກາມ)
໒. ທິດຖຸປາທານ (ຄວາມຍຶດໝັ້ນໃນທິດຖິ)
໓. ສີລັດພະຕຸປາທານ (ຄວາມຍຶດໝັ້ນໃນສິນແລະຂໍ້ວັດປະຕິບັດ)
໔. ອັດຕະວາທຸປາທານ (ຄວາມຍຶດໝັ້ນໃນວາທະວ່າມີອັດຕາ)

ມີສະມະນະພາມພວກໜຶ່ງ ປະຕິຍານລັດທິວ່າຮອບຮູ້ອຸປາທານທຸກຢ່າງ[១] ແຕ່ພວກເຂົາບໍ່ບັນຍັດຄວາມຮອບຮູ້ອຸປາທານທຸກຢ່າງໂດຍຊອບ ຄື ບັນຍັດຄວາມຮອບຮູ້ກາມຸປາທານ ບໍ່ບັນ

ຍັດຄວາມຮອບຮູ້ທິດຖຸປາຫານ ບໍ່ບັນຍັດຄວາມຮອບຮູ້ສີລັບພະຕຸປາຫານ ບໍ່ບັນຍັດຄວາມຮອບຮູ້ອັດຕະວາທຸປາຫານ ຂໍ້ນັ້ນ ຍ້ອນເຫດໃດ? ຍ້ອນສະມະນະພາມເຫຼົ່ານັ້ນ ບໍ່ຮູ້ຖານະ ໖ ປະການນີ້ຕາມຄວາມເປັນຈິງ ເພາະເຫດນັ້ນ ພວກເຂົາຈຶ່ງປະຕິຍານລັດທິວ່າ ຮອບຮູ້ອຸປາທານທຸກຢ່າງ ແຕ່ພວກເຂົາບໍ່ບັນຍັດຄວາມຮອບຮູ້ອຸປາທານທຸກຢ່າງໂດຍຊອບ ຄື ບັນຍັດຄວາມຮອບຮູ້ກາມຸປາທານ ບໍ່ບັນຍັດຄວາມຮອບຮູ້ທິດຖຸປາທານ ບໍ່ບັນຍັດຄວາມຮອບຮູ້ສີລັບພະຕຸປາທານ ບໍ່ບັນຍັດຄວາມຮອບຮູ້ອັດຕະວາທຸປາທານ

ມີສະມະນະພາມພວກໜຶ່ງ ປະຕິຍານລັດທິວ່າ ຮອບຮູ້ອຸປາທານທຸກຢ່າງ ແຕ່ພວກເຂົາບໍ່ບັນຍັດຄວາມຮອບຮູ້ອຸປາທານທຸກຢ່າງໂດຍຊອບ ຄື ບັນຍັດຄວາມຮອບຮູ້ກາມຸປາທານ ບັນຍັດຄວາມຮອບຮູ້ທິດຖຸປາທານ ບໍ່ບັນຍັດຄວາມຮອບຮູ້ສີລັບພະຕຸປາທານ ບໍ່ບັນຍັດຄວາມຮອບຮູ້ອັດຕະວາທຸປາທານ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນສະມະນະພາມເຫຼົ່ານັ້ນບໍ່ຮູ້ຖານະ ໔ ປະການນີ້ຕາມຄວາມເປັນຈິງ ເພາະເຫດນັ້ນ ພວກເຂົາຈຶ່ງປະຕິຍານລັດທິວ່າຮອບຮູ້ອຸປາທານທຸກຢ່າງ ແຕ່ພວກເຂົາບໍ່ບັນຍັດຄວາມຮອບຮູ້ອຸປາທານທຸກຢ່າງໂດຍຊອບ ຄື ບັນຍັດຄວາມຮອບຮູ້ກາມຸປາທານ ບັນຍັດຄວາມຮອບຮູ້ທິດຖຸປາທານ ບໍ່ບັນຍັດຄວາມຮອບຮູ້ສີລັບພະຕຸປາທານ ບໍ່ບັນຍັດຄວາມຮອບຮູ້ອັດຕະວາທຸປາທານ

ມີສະມະນະພາມພວກໜຶ່ງ ປະຕິຍານລັດທິວ່າຮອບຮູ້ອຸປາທານທຸກຢ່າງ ແຕ່ພວກເຂົາບໍ່ບັນຍັດຄວາມຮອບຮູ້ອຸປາທານທຸກຢ່າງໂດຍຊອບ ຄື ບັນຍັດຄວາມຮອບຮູ້ກາມຸປາທານ ບັນຍັດຄວາມຮອບຮູ້ທິດຖຸປາທານ ບັນຍັດຄວາມຮອບຮູ້ສີລັບພະຕຸປາທານ ບໍ່ບັນຍັດຄວາມຮອບຮູ້ອັດຕະວາທຸປາທານ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນສະມະນະພາມເຫຼົ່ານັ້ນບໍ່ຮູ້ຖານະ ໑ ປະການນີ້ຕາມຄວາມເປັນຈິງ ເພາະເຫດນັ້ນ ພວກເຂົາຈຶ່ງປະຕິຍານລັດທິວ່າຮອບຮູ້ອຸປາທານທຸກຢ່າງ ແຕ່ພວກເຂົາບໍ່ບັນຍັດຄວາມຮອບຮູ້ອຸປາທານທຸກຢ່າງໂດຍຊອບ ຄື ບັນຍັດຄວາມຮອບຮູ້ກາມຸປາທານ ບັນຍັດຄວາມຮອບຮູ້ທິດຖຸປາທານ ບັນຍັດຄວາມຮອບຮູ້ ສີລັບພະຕຸປາທານ ບໍ່ບັນຍັດຄວາມຮອບຮູ້ອັດຕະວາທຸປາທານ

ພິກຂຸທັງຫຼາຍ ຄວາມເຫຼື້ອມໃສໃດໃນສາດສະດາ ຄວາມເຫຼື້ອມໃສໃດໃນທຳ ຄວາມເປັນຜູ້ເຮັດໃຫ້ບໍລິບູນໃດໃນສິນທັງຫຼາຍ ຄວາມເປັນທີ່ຮັກເປັນທີ່ພໍໃຈໃດໃນໝູ່ສະຫະທຳມິກ ຂໍ້ນັ້ນທັງໝົດເຮົາບໍ່ກ່າວວ່າ ດຳເນີນໄປຊອບໃນທຳວິໄນເຫັນປານນີ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຂໍ້ນັ້ນເປັນຄວາມເຫຼື້ອມໃສໃນທຳວິໄນທີ່ສາດສະດາກ່າວໄວ້ຜິດແລ້ວ ປະກາດໄວ້ບໍ່ຖືກຕ້ອງ ບໍ່ເປັນເຫດນຳສັດອອກຈາກທຸກ ບໍ່ເປັນໄປເພື່ອຄວາມສະງົບ ພຣະສຳມາສຳພຸດທະເຈົ້າບໍ່ໄດ້ປະກາດໄວ້

[໑໔໔] ພິກຂຸທັງຫຼາຍ ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດເຈົ້າ ປະຕິຍານວາທະວ່າຮອບຮູ້ອຸປາທານທຸກຢ່າງ ຈຶ່ງບັນຍັດຄວາມຮອບຮູ້ອຸປາທານທຸກຢ່າງໂດຍຊອບ ຄື ບັນຍັດ

ຄວາມຮອບຮູ້ກາມຸປາທານ[๑] ຄວາມຮອບຮູ້ທິດຖຸປາທານ ຄວາມຮອບຮູ້ສີລັພພະຕຸປາທານ ແລະ ຄວາມຮອບຮູ້ອັດຕະວາທຸປາທານ ຄວາມເຫຼື້ອມໃສໃດໃນສາດສະດາ ຄວາມເຫຼື້ອມໃສໃດໃນທຳ ຄວາມເປັນຜູ້ເຮັດໃຫ້ບໍລິບູນໃດໃນສິນທັງຫຼາຍ ຄວາມເປັນທີ່ຮັກເປັນທີ່ພໍໃຈໃດໃນໝູ່ສະຫະທຳມິກ ຂໍ້ນັ້ນ ທັງໝົດເຮົາກ່າວວ່າ ດຳເນີນໄປຊອບໃນທຳວິໄນເຫັນປານນີ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຂໍ້ນັ້ນ ເປັນຄວາມເຫຼື້ອມໃສໃນທຳວິໄນທີ່ເຮົາກ່າວໄວ້ຖືກຕ້ອງແລ້ວ ປະກາດໄວ້ຖືກຕ້ອງແລ້ວ ເປັນເຫດນຳສັດອອກຈາກທຸກ ເປັນໄປເພື່ອຄວາມສະງົບ ພຣະສຳມາສຳພຸດທະເຈົ້າປະກາດໄວ້ດີແລ້ວ

## ຫຼັກປະຕິດຈະສະມຸບບາດເລີ່ມຕົ້ນດ້ວຍອຸປາທານ

[໑໔໕] ພິກຂຸທັງຫຼາຍ ອຸປາທານ ໔ ປະການນີ້ເດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ?

ອຸປາທານ ໔ ປະການນີ້ ມີຕັນຫາເປັນຕົ້ນເຫດ ມີຕັນຫາເປັນເຫດເກີດ ມີຕັນຫາເປັນກຳເນີດ ມີຕັນຫາເປັນແດນເກີດ

ຕັນຫາເດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ?

ຕັນຫາ ມີເວທະນາເປັນຕົ້ນເຫດ ມີເວທະນາເປັນເຫດເກີດ ມີເວທະນາເປັນກຳເນີດ ມີເວທະນາເປັນແດນເກີດ

ເວທະນານີ້ເດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ?

ເວທະນາ ມີຜັດສະເປັນຕົ້ນເຫດ ມີຜັດສະເປັນເຫດເກີດ ມີຜັດສະເປັນກຳເນີດ ມີຜັດສະເປັນແດນເກີດ

ຜັດສະນີ້ເດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ?

ຜັດສະ ມີສະລາຍະຕະນະເປັນຕົ້ນເຫດ ມີສະລາຍະຕະນະເປັນເຫດເກີດ ມີສະລາຍະຕະນະເປັນກຳເນີດ ມີສະລາຍະຕະນະເປັນແດນເກີດ

ສະລາຍະຕະນະນີ້ເດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ?

ສະລາຍະຕະນະ ມີນາມຮູບເປັນຕົ້ນເຫດ ມີນາມຮູບເປັນເຫດເກີດ ມີນາມຮູບເປັນກຳເນີດ ມີນາມຮູບເປັນແດນເກີດ

ນາມຮູບນີ້ເດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ?

ນາມຮູບ ມີວິນຍານເປັນຕົ້ນເຫດ ມີວິນຍານເປັນເຫດເກີດ ມີວິນຍານເປັນກຳເນີດ ມີວິນຍານເປັນແດນເກີດ

ວິນຍານນີ້ເດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ?

ວິນຍານ ມີສັງຂານເປັນຕົ້ນເຫດ ມີສັງຂານເປັນເຫດເກີດ ມີສັງຂານເປັນກຳເນີດ ມີສັງຂານເປັນແດນເກີດ

ສັງຂານນີ້ເດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ?

ສັງຂານ ມີອະວິດຊາເປັນຕົ້ນເຫດ ມີອະວິດຊາເປັນເຫດເກີດ ມີອະວິດຊາເປັນກຳເນີດ ມີອະວິດຊາ ເປັນແດນເກີດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸລະອະວິດຊາໄດ້ແລ້ວ ວິດຊາເກີດຂຶ້ນແລ້ວ ເມື່ອນັ້ນ ພິກຂຸບໍ່ຢຶດໝັ້ນກາມຸປາທານ ທິດຖຸປາທານ ສີລັບພະຕຸປາທານ ແລະ ອັດຕະວາທຸປາທານ ຍ້ອນກຳຈັດອະວິດຊາໄດ້ແລ້ວ ວິດຊາຈຶ່ງເກີດຂຶ້ນ ເມື່ອບໍ່ຢຶດໝັ້ນ ທ່ານກໍບໍ່ສະດຸ້ງ ເມື່ອບໍ່ສະດຸ້ງ ທ່ານກໍປະຣິນິບພານສະເພາະຕົນ ແລະ ເມື່ອນັ້ນ ພິກຂຸຮູ້ແຈ້ງວ່າ “ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີ ຕ່າງຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະສີຫະນາທະສູດທີ ໑ ຈົບ**

# ໘. ມະຫາສີຫະນາທະສູດ

### ວ່າດ້ວຍການບັນລືສີຫະນາດ ສູດໃຫຍ່

## ສຸນັກຂັດຕະກ່າວຕູ່ພຣະພຸດທະເຈົ້າ

[໑໔໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ແຖວປ່າທາງທິດຕາເວັນຕົກຢູ່ນອກພຣະນະຄອນເຂດນະຄອນເວສາລີ ສະໄໝນັ້ນແລ ໂອຣົດເຈົ້າລິດສະຫວີພຣະນາມວ່າ ສຸນັກຂັດຕະລາ

ສິກຂາຈາກພຣະທຳວິໄນນີ້ໄດ້ບໍ່ດົນ ທ່ານໄດ້ກ່າວໃນຊຸມຊົນ ໃນນະຄອນເວສາລີແນວນີ້ວ່າ

"ສະມະນະໂຄດົມບໍ່ມີຍານທັດສະນະທີ່ປະເສີດອັນສາມາດ໌ ວິເສດເໜືອຍິ່ງກວ່າທຳຂອງມະນຸດ໌ ສະມະນະໂຄດົມສະແດງທຳທີ່ປະມວນມາດ້ວຍຄວາມນຶກຄິດ ດ້ວຍການຄົ້ນຄິດຊັດແຈ້ງດ້ວຍຕົນເອງ ທຳທີ່ສະມະນະໂຄດົມສະແດງເພື່ອປະໂຫຍດແກ່ບຸກຄົນ ຍ່ອມນຳໄປເພື່ອຄວາມສິ້ນທຸກໂດຍຊອບສຳລັບບຸກຄົນຜູ້ປະຕິບັດຕາມທຳນັ້ນ"

ເມື່ອໃນເວລາເຊົ້າ ທ່ານພຣະສາຣີບຸດຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປບິນທະບາດໃນເມືອງເວສາລີ ທ່ານໄດ້ສະດັບຄຳຂອງໂອຣົດເຈົ້າລິດສະຫວີພຣະນາມວ່າ ສຸນັກຂັດຕະ ຜູ້ກ່າວໃນຊຸມຊົນ ໃນນະຄອນເວສາລີແນວນີ້ວ່າ "ສະມະນະໂຄດົມບໍ່ມີຍານທັດສະນະທີ່ປະເສີດອັນສາມາດ ວິເສດເໜືອຍິ່ງກວ່າທຳຂອງມະນຸດ ສະມະນະໂຄດົມສະແດງທຳທີ່ປະມວນມາດ້ວຍຄວາມນຶກຄິດ ດ້ວຍການຄົ້ນຄິດຊັດແຈ້ງດ້ວຍຕົນເອງ ທຳທີ່ສະມະນະໂຄດົມສະແດງເພື່ອປະໂຫຍດແກ່ບຸກຄົນ ຍ່ອມນຳໄປເພື່ອຄວາມສິ້ນທຸກໂດຍຊອບສຳລັບບຸກຄົນຜູ້ປະຕິບັດຕາມທຳນັ້ນ"

ລຳດັບນັ້ນ ທ່ານພຣະສາຣີບຸດ ເມື່ອທ່ຽວບິນທະບາດໃນນະຄອນເວສາລີເສັດແລ້ວ ກັບຈາກບິນທະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໂອຣົດເຈົ້າລິດສະຫວີພຣະນາມວ່າ ສຸນັກຂັດຕະ ຜູ້ລາສິກຂາຈາກພຣະທຳວິໄນນີ້ໄດ້ບໍ່ດົນ ທ່ານໄດ້ກ່າວໃນຊຸມຊົນ ໃນນະຄອນເວສາລີແນວນີ້ວ່າ "ສະມະນະໂຄດົມສະແດງທຳທີ່ປະມວນມາດ້ວຍຄວາມນຶກຄິດ ດ້ວຍການຄົ້ນຄິດຊັດແຈ້ງດ້ວຍຕົນເອງ ທຳທີ່ສະມະນະໂຄດົມສະແດງເພື່ອປະໂຫຍດແກ່ບຸກຄົນ ຍ່ອມນຳໄປເພື່ອຄວາມສິ້ນທຸກໂດຍຊອບສຳລັບບຸກຄົນຜູ້ປະຕິບັດຕາມທຳນັ້ນ"

[໑໔໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ໂອຣົດເຈົ້າລິດສະຫວີພຣະນາມວ່າ ສຸນັກຂັດຕະ ເປັນໂມຄະບຸຣຸດ ມັກໂກດ ທ່ານກ່າວວາຈານັ້ນຍ້ອນຄວາມໂກດ ສຸນັກຂັດຕະ ໂມຄະບຸຣຸດນັ້ນຄິດວ່າ "ຈັກກ່າວຕິຕຽນ" ແຕ່ກັບກ່າວສັນເສີນຄຸນຂອງຕະຖາຄົດຢູ່ ແທ້ຈິງຂໍ້ທີ່ບຸກຄົນຈະເພິ່ງກ່າວແນວນີ້ວ່າ "ທຳທີ່ສະມະນະໂຄດົມສະແດງເພື່ອປະໂຫຍດແກ່ບຸກຄົນ ຍ່ອມນຳໄປເພື່ອຄວາມສິ້ນທຸກໂດຍຊອບສຳລັບບຸກຄົນຜູ້ປະຕິບັດຕາມທຳນັ້ນ" ເປັນການກ່າວສັນເສີນຄຸນຂອງຕະຖາຄົດ ເສຸນັກຂັດຕະ ໂມຄະບຸຣຸດນັ້ນ ຈັກບໍ່ມີປັນຍາຮູ້ແຈ້ງທຳໃນຕະຖາຄົດ ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະ

ເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ"

ສຸນັກຂັດຕະ ໂມຄະບຸຣຸດນັ້ນ ຈັກບໍ່ມີປັນຍາຮູ້ທຳໃນຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກພຣະອົງນັ້ນ ຊົງສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາກຳແພງ ແລະພູໄປໄດ້ບໍ່ຕິດຂັດ ເໝືອນໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືດຳລົງໃນແຜ່ນດິນເໝືອນໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກເໝືອນຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິ ເຫາະໄປໃນອາກາດເໝືອນນົກບິນໄປກໍໄດ້ ໃຊ້ຝ່າມືລູບຄຳດວງຈັນແລະດວງອາທິດອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກ ກໍໄດ້"

ສຸນັກຂັດຕະ ໂມຄະບຸຣຸດນັ້ນ ຈັກບໍ່ມີປັນຍາຮູ້ທຳໃນຕະຖາຄົດ ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງສະດັບສຽງ ໒ ຊະນິດ ຄື (໑) ສຽງທິບ (໒) ສຽງມະນຸດ ທັງທີ່ຢູ່ໄກແລະຢູ່ໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດໄດ້"

ສຸນັກຂັດຕະ ໂມຄະບຸຣຸດນັ້ນ ຈັກບໍ່ມີປັນຍາຮູ້ທຳໃນຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງກຳນົດຮູ້ໃຈຂອງສັດແລະບຸກຄົນອື່ນດ້ວຍໃຈ ຄື ຈິດມີຣາຄະກໍຮູ້ວ່າ "ຈິດມີຣາຄະ" ຫຼື ຈິດປາສະຈາກຣາຄະກໍຮູ້ວ່າ "ຈິດປາສະຈາກຣາຄະ" ຈິດມີໂທສະກໍຮູ້ວ່າ "ຈິດມີໂທສະ" ຫຼື ຈິດປາສະຈາກໂທສະກໍຮູ້ວ່າ "ຈິດປາສະຈາກໂທສະ" ຈິດມີໂມຫະ ກໍຮູ້ວ່າ "ຈິດມີໂມຫະ" ຫຼື ຈິດປາສະຈາກໂມຫະກໍຮູ້ວ່າ "ຈິດປາສະຈາກໂມຫະ" ຈິດຫົດຫູ່ກໍຮູ້ວ່າ "ຈິດຫົດຫູ່" ຫຼື ຈິດຟຸ້ງຊ່ານກໍຮູ້ວ່າ "ຈິດຟຸ້ງຊ່ານ" ຈິດເປັນມະຫັກຄະຕະກໍຮູ້ວ່າ "ຈິດເປັນມະຫັກຄະຕະ" ຫຼື ຈິດບໍ່ເປັນມະຫັກຄະຕະກໍຮູ້ວ່າ "ຈິດບໍ່ເປັນມະຫັກຄະຕະ" ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າ "ຈິດມີ ຈິດອື່ນຍິ່ງກວ່າ" ຫຼື ຈິດບໍ່ມີຈິດອື່ນຍິ່ງກວ່າກໍຮູ້ວ່າ "ຈິດບໍ່ມີຈິດອື່ນຍິ່ງກວ່າ" ຈິດເປັນສະມາທິ ກໍຮູ້ວ່າ "ຈິດເປັນສະມາທິ" ຫຼື ຈິດບໍ່ເປັນສະມາທິກໍຮູ້ວ່າ "ຈິດບໍ່ເປັນສະມາທິ" ຈິດລຸດພົ້ນກໍຮູ້ວ່າ "ຈິດລຸດພົ້ນ" ຫຼືຈິດບໍ່ລຸດພົ້ນກໍຮູ້ວ່າ "ຈິດບໍ່ລຸດພົ້ນ"

## ກຳລັງຂອງພຣະຕະຖາຄົດເຈົ້າ ໑໐ ປະການ

[໑໘໗] ສາຣີບຸດ ກຳລັງຂອງຕະຖາຄົດ ໑໐ ປະການນີ້ທີ່ຕະຖາຄົດ ມີແລ້ວ ເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ[໒] ບັນລືສີຫະນາດ[໓] ປະກາດພົມມະຈັກ[໔]ໃນບໍລິສັດ[໕]

ກຳລັງຂອງຕະຖາຄົດ ໑໐ ປະການ ອັນໃດແດ່? ຄື

໑. ຕະຖາຄົດເຈົ້າຮູ້ແຈ້ງຖານະ[໖] ໂດຍຄວາມເປັນຖານະ ແລະ ອະຖານະໂດຍຄວາມເປັນອະຖານະໃນໂລກນີ້ຕາມຄວາມເປັນຈິງ ການທີ່ຕະຖາຄົດເຈົ້າຮູ້ແຈ້ງຖານະໂດຍຄວາມເປັນ

ຖານະ ແລະ ອະຖານະໂດຍຄວາມເປັນອະຖານະຕາມຄວາມເປັນຈິງ ນີ້ ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໒. ຕະຖາຄົດເຈົ້າຮູ້ແຈ້ງວິບາກແຫ່ງການຍຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະ ປັດຈຸບັນໂດຍຖານະ ໂດຍເຫດຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວິບາກແຫ່ງການຍຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະ ປັດຈຸບັນໂດຍຖານະ ໂດຍເຫດຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດ ທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກ ໃນບໍລິສັດ

໓. ຕະຖາຄົດຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງ[໑]ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໔. ຕະຖາຄົດຮູ້ແຈ້ງໂລກທີ່ມີທາດຫຼາຍຊະນິດ[໒] ມີທາດທີ່ແຕກຕ່າງກັນ[໓] ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງໂລກທີ່ມີທາດຫຼາຍຊະນິດ ມີທາດທີ່ແຕກຕ່າງກັນຕາມຄວາມເປັນຈິງ ນີ້ ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໕. ຕະຖາຄົດຮູ້ແຈ້ງວ່າ ໝູ່ສັດເປັນຜູ້ມີອັດທະຍາໄສຕ່າງກັນຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວ່າໝູ່ສັດເປັນຜູ້ມີອັດທະຍາໄສຕ່າງກັນຕາມຄວາມເປັນຈິງ ນີ້ ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໖. ຕະຖາຄົດຮູ້ແຈ້ງວ່າ ສັດເຫຼົ່າອື່ນ ແລະ ບຸກຄົນເຫຼົ່າອື່ນ ມີອິນຊີແກ່ກ້າແລະອິນຊີອ່ອນຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວ່າສັດເຫຼົ່າອື່ນ ແລະ ບຸກຄົນເຫຼົ່າອື່ນ ມີອິນຊີແກ່ກ້າແລະອິນຊີອ່ອນຕາມຄວາມເປັນຈິງ ນີ້ ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານ ຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໗. ຕະຖາຄົດຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິ ແລະ ສະມາບັດ ແລະ ການອອກຈາກຊານ ວິໂມກ ສະມາທິ ແລະ ສະມາບັດ ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະ ການອອກຈາກຊານ ວິໂມກ ສະມາທິ ແລະ ສະມາບັດຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ

ປະກາດພົມມະຈັກໃນບໍລິສັດ

໗. ຕະຖາຄົດຣະນຶກເຖິງຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັຕຕະກັບ ເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບເປັນຈຳນວນຫຼາຍແດ່ ວ່າ "ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວຈຶ່ງມາເກີດໃນພົບນີ້" ຕະຖາຄົດຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ການທີ່ຕະຖາຄົດຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໆລໆ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໘. ຕະຖາຄົດເຫັນໝູ່ສັດຜູ້ກຳລັງຈຸຕິ (ເຄື່ອນ) ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບ ກາຍທຸຈະຣິດ ວະຈີທຸຈະຣິດ ແລະ ມະໂນທຸຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມຄິດເຫັນຜິດ ແລະ ຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸຈະຣິດ ວະຈີສຸຈະຣິດ ແລະ ມະໂນສຸຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະ ຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນສຸຄະຕິໂລກສະ ຫວັນ ຕະຖາຄົດເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ ການທີ່ຕະຖາຄົດເຫັນໝູ່ສັດ ໆລໆ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໑໐. ຕະຖາຄົດເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ການທີ່ຕະຖາຄົດ ເຮັດໃຫ້ແຈ້ງເຈໂຕວິມຸດຕິປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

ພິກຂຸທັງຫຼາຍ ກຳລັງຂອງຕະຖາຄົດ ໑໐ ປະການນີ້ແລ ທີ່ຕະຖາຄົດມີແລ້ວ ເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

[໑໔໙] ສາຣີບຸດ ບຸກຄົນໃດແລ ເພິ່ງວ່າກ່າວເຮົາຜູ້ຮູ້ຢູ່ ເຫັນຢູ່ແນວນີ້ວ່າ "ສະມະນະໂຄດົມບໍ່ມີຍານທັດສະນະທີ່ປະເສີດອັນສາມາດ ວິເສດເໜືອຍິ່ງກວ່າທຳຂອງມະນຸດ "ສະມະນະໂຄດົມສະແດງທຳທີ່ປະມວນມາດ້ວຍຄວາມນຶກຄິດ ດ້ວຍການຄົ້ນຄິດ ຊັດແຈ້ງດ້ວຍຕົນເອງ" ບຸກຄົນນັ້ນ ບໍ່ລະວາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຣົກເໝືອນຖືກນຳໄປຝັງໄວ້ ອຸປະມາເໝືອນພິກຂຸຜູ້ສົມບູນດ້ວຍສີນ ສົມບູນດ້ວຍສະມາທິ ສົມບູນດ້ວຍປັນຍາ ເພິ່ງຍິນດີອະຣະຫັດຕະຜົນໃນປັດຈຸບັນ ແມ່ນສັນໃດ ເຮົາກ່າວ ຂໍ້ອຸປະໄມນີ້ ສັນນັ້ນ ບຸກຄົນນັ້ນ ເມື່ອບໍ່ລະວາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຣົກເໝືອນຖືກນຳໄປຝັງໄວ້

## ເວສາຣັດຊະຍານ ໔

[໑໕໐] ສາຣີບຸດ ເວສາຣັດຊະຍານ (ຍານເປັນເຫດໃຫ້ແກ່ກ້າ) ໔ ປະການນີ້ ທີ່ຕະຖາຄົດມີແລ້ວເປັນເຫດໃຫ້ປະຕິຍານ (ຢືນຢັນ) ຖານະທີ່ອົງອາດ ບັນລືສີຫະນາດ ປະກາດ ພົມມະຈັກໃນບໍລິສັດ

ເວສາຣັດຊະຍານຂອງຕະຖາຄົດ ໔ ປະການ ມີອັນໃດແດ່? ຄື

໑. ເຮົາບໍ່ເຫັນນິມິດ໌ນີ້ ວ່າ "ສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດ໌ ໃນທຳນັ້ນວ່າ "ທ່ານຜູ້ປະຕິຍານຕົນວ່າ ເປັນພຣະສຳມາສຳພຸດທະເຈົ້າ ທຳເຫຼົ່ານີ້ທ່ານຍັງບໍ່ຮູ້" ເຮົາເມື່ອບໍ່ເຫັນນິມິດແມ່ນແນວນີ້ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າອາດຫານຢູ່

໒. ເຮົາບໍ່ເຫັນນິມິດນີ້ ວ່າ "ສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດໃນທຳນັ້ນວ່າ "ທ່ານຜູ້ປະຕິຍານຕົນວ່າ ເປັນພຣະຂີນາສົບອາສະວະເຫຼົ່ານີ້ຂອງທ່ານຍັງບໍ່ສິ້ນໝົດໄປ" ເຮົາເມື່ອບໍ່ເຫັນນິມິດແມ່ນແນວນີ້ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າອາດຫານຢູ່

໓. ເຮົາບໍ່ເຫັນນິມິດນີ້ ວ່າ "ສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດໃນທຳນັ້ນວ່າ "ອັນຕະຣາຍິກະທຳທີ່ທ່ານກ່າວໄວ້ ບໍ່ສາມາດກໍ່ອັນຕະລາຍແກ່ຜູ້ເສບໄດ້ແທ້ຈິງ" ເຮົາເມື່ອບໍ່ເຫັນນິມິດແມ່ນນີ້ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າອາດຫານຢູ່

໔. ເຮົາບໍ່ເຫັນນິມິດນີ້ວ່າ "ສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກ ຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດໃນທຳນັ້ນ ວ່າ "ທ່ານສະແດງທຳເພື່ອປະໂຫຍດແນວໃດປະໂຫຍດແນວນັ້ນ ບໍ່ສາມາດເພື່ອທຳຄວາມສິ້ນທຸກໂດຍຊອບແກ່ຜູ້ເຮັດຕາມໄດ້ແທ້ຈິງ" ເຮົາເມື່ອບໍ່ເຫັນນິມິດ ແມ່ນນີ້ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າອາດຫານຢູ່

ສາຣີບຸດ ເວສາຣັດຊະຍານ ໔ ປະການນີ້ແລ ທີ່ຕະຖາຄົດມີແລ້ວ ເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

ບຸກຄົນໃດເພິ່ງວ່າກ່າວເຮົາຜູ້ຮູ້ຢູ່ ເຫັນຢູ່ແນວນີ້ວ່າ "ສະມະນະໂຄດົມບໍ່ມີຍານທັດສະນະທີ່ປະເສີດອັນສາມາດ ວິເສດເໜືອຍິ່ງກວ່າທຳຂອງມະນຸດ ສະມະນະໂຄດົມສະແດງທຳທີ່ປະມວນມາດ້ວຍຄວາມນຶກຄິດ ດ້ວຍການຄົ້ນຄິດຊັດແຈ້ງດ້ວຍຕົນເອງ" ບຸກຄົນນັ້ນ ຖ້າບໍ່ລະວາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຣົກ ເໝືອນຖືກນຳໄປຝັງໄວ້ ອຸປະມາເໝືອນພິກຂຸຜູ້ສົມບູນດ້ວຍສິນ ສົມບູນດ້ວຍສະມາທິ ສົມບູນດ້ວຍປັນຍາ ເພິ່ງຍິນດີອະຣະຫັດຕະຜົນໃນປັດຈຸບັນ ແມ່ນສັນໃດ ເຮົາກ່າວຂໍ້ອຸປະໄມນີ້ໄວ້ ສັນນັ້ນ ບຸກຄົນນັ້ນ ຖ້າບໍ່ລະວາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຣົກ ເໝືອນຖືກນຳໄປຝັງໄວ້

## ບໍລິສັດ ໘

[໑໕໑] ສາຣີບຸດ ບໍລິສັດ ໘ ຈຳພວກນີ້

ບໍລິສັດ ໘ ຈຳພວກໃດແດ່? ຄື

| | |
|---|---|
| ໑. ຂັດຕິຍະບໍລິສັດ | ໒. ພາມມະນະບໍລິສັດ |
| ໓. ຄະຫະບໍດີບໍລິສັດ | ໔. ສະມະນະບໍລິສັດ |
| ໕. ຈາຕຸມະຫາຣາດບໍລິສັດ | ໖. ຕາວະຕິງສາບໍລິສັດ |
| ໗. ມານບໍລິສັດ | ໘. ພົມບໍລິສັດ |

ບໍລິສັດມີ ໘ ຈຳພວກນີ້ແລ

ຕະຖາຄົດມີເວສາຣັດຊະຍານ ໔ ປະການນີ້ ຈຶ່ງເຂົ້າໄປຄົບຫາບໍລິສັດ ໘ ຈຳພວກນັ້ນ ເຮົາເຂົ້າໄປສູ່ຂັດຕິຍະບໍລິສັດຫຼາຍຮ້ອຍບໍລິສັດຍ່ອມຮູ້ວ່າ ແມ່ນໃນບໍລິສັດນັ້ນ ເຮົາກໍເຄີຍນັ່ງໃກ້ ເຄີຍທັກທາຍ ເຄີຍປາໄສ ເຄີຍສົນທະນາກັນ ເຮົາບໍ່ເຫັນນິມິດວ່າ "ຄວາມຢ້ານ ຫຼື ຄວາມສະທົກສະທ້ານຈັກແຊກຊຶມເຮົາໃນບໍລິສັດນັ້ນໄດ້ເລີຍ" ເຮົາເມື່ອບໍ່ເຫັນນິມິດແມ່ນນີ້ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າຢູ່

ອັນໜຶ່ງ ເຮົາເຂົ້າໄປສູ່ພາມມະນະບໍລິສັດຫຼາຍຮ້ອຍບໍລິສັດ ຯລຯ ຄະຫະບໍດີບໍລິສັດ ຯລຯ ສະມະນະບໍລິສັດ ຯລຯ ຈາຕຸມະຫາຣາດບໍລິສັດ ຯລຯ ຕາວະຕິງສາບໍລິສັດ ຯລຯ ມານບໍລິສັດເຂົ້າໄປ ຍັງພົມບໍລິສັດຫຼາຍຮ້ອຍບໍລິສັດຍ່ອມຮູ້ວ່າ ແມ່ນໃນບໍລິສັດນັ້ນ ໆ ເຮົາກໍເຄີຍນັ່ງໃກ້ ເຄີຍທັກທາຍ ເຄີຍປາໄສ ເຄີຍສົນທະນາກັນ ເຮົາບໍ່ເຫັນນິມິດວ່າ "ຄວາມຢ້ານ ຫຼື ຄວາມສະທົກສະທ້ານຈັກແຊກຊຶມເຮົາໃນບໍລິສັດນັ້ນໄດ້ເລີຍ" ເຮົາເມື່ອບໍ່ເຫັນນິມິດແມ່ນນີ້ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານ ແກ່ກ້າຢູ່

ບຸກຄົນໃດເພິ່ງວ່າກ່າວເຮົາຜູ້ຮູ້ຢູ່ ເຫັນຢູ່ແນວນີ້ວ່າ "ສະມະນະໂຄດົມບໍ່ມີຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ສະມະນະໂຄດົມສະແດງທຳທີ່ປະມວນມາດ້ວຍຄວາມນຶກ ທີ່ຮິ່ນຕອງດ້ວຍການຄົ້ນຄິດ ແຈ່ມແຈ້ງໄດ້ເອງ" ບຸກຄົນນັ້ນ ບໍ່ລະອາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຮົກເໝືອນຖືກນຳໄປຝັງໄວ້ ອຸປະມາເໝືອນພິກຂຸຜູ້ສົມບູນດ້ວຍສິນ ສົມບູນດ້ວຍສະມາທິ ສົມບູນດ້ວຍປັນຍາ ເພິ່ງຍິນດີອະຣະຫັດຕະຜົນໃນປັດຈຸບັນ ແມ່ນສັນໃດ ເຮົາກ່າວຂໍ້ອຸປະໄມນີ້ ສັນນັ້ນ ບຸກຄົນນັ້ນບໍ່ລະອາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຮົກເໝືອນຖືກນຳໄປຝັງໄວ້

## ກຳເນີດ ໔

[໑໕໘] ສາຣີບຸດ ກຳເນີດ ໔ ຊະນິດນີ້

ກຳເນີດ ໔ ຊະນິດ ໃດແດ່? ຄື

໑. ກຳເນີດອັນທະຊະ (ການເກີດໃນໄຂ່)
໒. ກຳເນີດຊະລາພຸຊະ (ການເກີດໃນທ້ອງ)
໓. ກຳເນີດສັງເສທະຊະ (ການເກີດໃນເຫົາໄຄຫຼືບ່ອນປຽກຊື້ນ)
໔. ກຳເນີດໂອປະປາຕິກະ (ການເກີດຜຸດຂຶ້ນທັນທີ)

ກຳເນີດອັນທະຊະຄືອັນໃດ?

ຄື ເຫຼົ່າສັດຜູ້ເຈາະທຳລາຍເປືອກໄຂ່ແລ້ວເກີດ ນີ້ເຮົາຮຽກວ່າ ກຳເນີດອັນທະຊະ

ກຳເນີດຊະລາພຸຊະຄືອັນໃດ?

ຄື ເຫຼົ່າສັດຜູ້ເກີດໃນທ້ອງ ນີ້ເຮົາຮຽກວ່າ ກຳເນີດຊະລາພຸຊະ

ກຳເນີດສັງເສທະຊະຄືອັນໃດ?

ຄື ເຫຼົ່າສັດຜູ້ເກີດໃນປາເນົ່າ ຊາກສົບເນົ່າ ຂະໜົມບູດ ນ້ຳເປື້ອນ ຫຼື ເທົາໄຄ ນີ້ເຮົາຮຽກວ່າ ກຳເນີດສັງເສທະຊະ

ກຳເນີດໂອປະປາຕິກະຄືອັນໃດ?

ຄື ເທວະດາ ສັດນະຮົກ ມະນຸດລາງຈຳພວກ ແລະເຜດບາງຈຳພວກ ນີ້ເຮົາຮຽກວ່າ ກຳເນີດໂອປະປາຕິກະ

ສາຣີບຸດ ກຳເນີດມີ ໔ ຊະນິດນີ້ແລ

ບຸກຄົນໃດຈະເພິ່ງວ່າກ່າວເຮົາຜູ້ຮູ້ຢູ່ ເຫັນຢູ່ແນວນີ້ວ່າ "ສະມະນະໂຄດົມບໍ່ມີຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ "ສະມະນະໂຄດົມສະແດງທຳທີ່ປະມວນມາດ້ວຍຄວາມນຶກຄິດ ດ້ວຍການຄົ້ນຄິດ ຊັດແຈ້ງດ້ວຍຕົນເອງ" ບຸກຄົນນັ້ນ ຖ້າບໍ່ລະວາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຮົກ ເໝືອນຖືກນຳໄປຝັງໄວ້ ອຸປະມາເໝືອນພິກຂຸຜູ້ສົມບູນດ້ວຍສີນ ສົມບູນດ້ວຍສະມາທິ ສົມບູນດ້ວຍປັນຍາ ເພິ່ງຍິນດີອະຣະຫັດຕະຜົນໃນປັດຈຸບັນ ແມ່ນສັນໃດ ເຮົາກ່າວຂໍ້ອຸປະໄມນີ້ ສັນນັ້ນ ບຸກຄົນນັ້ນ ຖ້າບໍ່ລະວາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ກໍຍ່ອມດຳລົງຢູ່ໃນນະຮົກເໝືອນຖືກນຳໄປຝັງໄວ້

## ຄະຕິ ໕

[໑໕໓] ສາຣີບຸດ ຄະຕິ ໕ ປະການນີ້

ຄະຕິ ໕ ປະການ ອັນໃດແດ່? ຄື

໑. ນະຮົກ
໒. ກຳເນີດເດຍຣັດສານ
໓. ເຜດວິໄສ
໔. ມະນຸດ
໕. ເທວະດາ

ເຮົາຮູ້ແຈ້ງ ນະຮົກ ທາງທີ່ນຳສັດໃຫ້ເຖິງນະຮົກ ຂໍ້ປະຕິບັດທີ່ນຳສັດໃຫ້ເຖິງນະຮົກ ແລະຮູ້ແຈ້ງຂໍ້ປະຕິບັດທີ່ສັດປະຕິບັດແລ້ວ ເປັນເຫດໃຫ້ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍທຸຄະຕິ ວິນິບາດ ນະຮົກ

ເຮົາຮູ້ແຈ້ງ ກຳເນີດເດຍຣັດສານ ທາງທີ່ນຳສັດໃຫ້ເຖິງກຳເນີດເດຍຣັດສານ ຂໍ້ປະຕິບັດທີ່ນຳສັດໃຫ້ເຖິງກຳເນີດເດຍຣັດສານ ແລະ ຮູ້ແຈ້ງຂໍ້ປະຕິບັດທີ່ສັດປະຕິບັດແລ້ວ ເປັນເຫດໃຫ້ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນກຳເນີດເດຍຣັດສານ

ເຮົາຮູ້ແຈ້ງ ເຜດວິໄສ ທາງທີ່ນໍາສັດໃຫ້ເຖິງເຜດວິໄສ ຂໍ້ປະຕິບັດທີ່ນໍາສັດໃຫ້ເຖິງເຜດວິໄສ ແລະ ຮູ້ແຈ້ງຂໍ້ປະຕິບັດທີ່ສັດປະຕິບັດແລ້ວ ເປັນເຫດໃຫ້ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນເຜດວິໄສ

ເຮົາຮູ້ແຈ້ງ ໝູ່ມະນຸດ ທາງທີ່ນໍາສັດໃຫ້ເຖິງມະນຸດສາໂລກ ຂໍ້ປະຕິບັດທີ່ນໍາສັດໃຫ້ເຖິງມະນຸດສາໂລກ ແລະ ຮູ້ແຈ້ງຂໍ້ປະຕິບັດທີ່ສັດປະຕິບັດແລ້ວ ເປັນເຫດໃຫ້ຫຼັງຈາກຕາຍແລ້ວຍ່ອມໄປເກີດໃນໝູ່ມະນຸດ

ເຮົາຮູ້ແຈ້ງ ເທວະດາທັງຫຼາຍ ທາງທີ່ນໍາສັດໃຫ້ເຖິງເທວະໂລກ ຂໍ້ປະຕິບັດທີ່ນໍາສັດໃຫ້ເຖິງເທວະໂລກ ແລະ ຮູ້ແຈ້ງຂໍ້ປະຕິບັດທີ່ສັດປະຕິບັດແລ້ວ ເປັນເຫດໃຫ້ຫຼັງຈາກຕາຍແລ້ວຍ່ອມໄປເກີດໃນສຸຄະຕິໂລກສະຫວັນ

ເຮົາຮູ້ແຈ້ງ ນິບພານ ທາງທີ່ນໍາສັດໃຫ້ເຖິງນິບພານ ຂໍ້ປະຕິບັດທີ່ນໍາສັດໃຫ້ເຖິງນິບພານ ແລະຮູ້ແຈ້ງຂໍ້ປະຕິບັດທີ່ສັດປະຕິບັດແລ້ວ ເປັນເຫດເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິທີ່ບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

## ຮູ້ເຫັນການໄປທຸຄະຕິແລະສຸຄະຕິຂອງບຸກຄົນ

[໑໕໔] ເຮົາກໍານົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແບບນີ້ວ່າ "ບຸກຄົນຜູ້ປະຕິບັດແບບນັ້ນ ເປັນໄປແບບນັ້ນ ແລະ ດໍາເນີນທາງນັ້ນແລ້ວ ຫຼັງຈາກຕາຍແລ້ວຈັກໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ" ຕໍ່ມາ ເຮົາເຫັນເຂົາຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ສະເຫວີຍທຸກຂະເວທະນາໂດຍສ່ວນດຽວອັນແຮງກ້າ ເຜັດຮ້ອນ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ຂຸມຖ່ານໄຟເລິກຫຼາຍກວ່າຊົ່ວຕົວບຸຣຸດ ເຕັມໄປດ້ວຍຖ່ານໄຟທີ່ປາສະຈາກນໍ້າແລະຄວັນ ລໍາດັບນັ້ນ ບຸຣຸດຜູ້ມີຮ່າງກາຍຖືກຄວາມຮ້ອນແຜດເຜົາ ຄອບງໍາ ເມື່ອຍລ້າ ສະທົກສະທ້ານ ຫິວກະຫາຍ ຍ່າງມຸ່ງໜ້າ ມາສູ່ຂຸມຖ່ານໄຟນັ້ນໂດຍຫົນທາງສາຍດຽວ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແບບນີ້ວ່າ "ບຸຣຸດຜູ້ຈະເລີນນີ້ ປະຕິບັດແບບນັ້ນ ເປັນໄປແບບນັ້ນ ແລະດໍາເນີນທາງນັ້ນ ຈັກມາເຖິງຂຸມຖ່ານໄຟນີ້ຢ່າງແນ່ນອນ" ຕໍ່ມາ ບຸຣຸດຜູ້ມີຕາດີນັ້ນ ຈະເພິ່ງເຫັນເຂົາຜູ້ຕົກລົງໃນຂຸມຖ່ານໄຟນັ້ນ ສະເຫວີຍທຸກຂະເວທະນາໂດຍສ່ວນດຽວ ອັນແຮງກ້າ ເຜັດຮ້ອນ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ກໍານົດຮູ້ໃຈຂອງບຸກຄົນ ລາງຄົນໃນໂລກນີ້ດ້ວຍໃຈແບບນີ້ວ່າ "ບຸກຄົນນີ້ປະຕິບັດແບບນັ້ນ ເປັນໄປແບບນັ້ນ ແລະ ດໍາເນີນທາງນັ້ນແລ້ວ ຫຼັງຈາກຕາຍແລ້ວຈັກໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ" ຕໍ່ມາ ເຮົາເຫັນເຂົາຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ສະເຫວີຍທຸກຂະເວທະນາໂດຍສ່ວນດຽວອັນແຮງກ້າ ເຜັດຮ້ອນ ດ້ວຍ

ຕາທິບອັນບໍລິສຸດເໜືອມະນຸດ

ເຮົາກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ "ບຸກຄົນຜູ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະ ດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍແລ້ວຈັກໄປເກີດໃນກຳເນີດເດຍຣັດສານ" ຕໍ່ມາ ເຮົາເຫັນເຂົາຫຼັງຈາກຕາຍແລ້ວໄປເກີດໃນກຳເນີດເດຍຣັດສານ ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ຂຸມອຸດຈາຣະເລິກກວ່າຕົວບຸຣຸດ ເຕັມໄປດ້ວຍອຸດຈາຣະ ລຳດັບນັ້ນ ບຸຣຸດຜູ້ມີຮ່າງກາຍຖືກຄວາມຮ້ອນແຜດເຜົາ ຄອບງຳ ເມື່ອຍລ້າ ສະທົກສະທ້ານ ຫິວກະຫາຍ ຍ່າງມຸ່ງໜ້າ ມາສູ່ຂຸມອຸດຈາຣະນັ້ນໂດຍຫົນທາງສາຍດຽວ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ບຸຣຸດຜູ້ຈະເລີນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນ ຈັກມາເຖິງຂຸມອຸດຈາຣະນີ້ຢ່າງແນ່ນອນ" ຕໍ່ມາ ບຸຣຸດຜູ້ມີຕາດີນັ້ນຈະເພິ່ງເຫັນເຂົາຜູ້ຕົກລົງໃນຂຸມອຸດຈາຣະນັ້ນແລ້ວ ສະເຫວີຍທຸກຂະເວທະນາ ອັນແຮງກ້າ ເຜັດຮ້ອນ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ "ບຸກຄົນນີ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍແລ້ວຈັກໄປເກີດໃນກຳເນີດເດຍຣັດສານ" ຕໍ່ມາ ເຮົາເຫັນເຂົາຫຼັງຈາກຕາຍແລ້ວໄປເກີດໃນກຳເນີດເດຍຣັດສານ ສະເຫວີຍທຸກຂະເວທະນາອັນແຮງກ້າເຜັດຮ້ອນ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ເຮົາກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ "ບຸກຄົນຜູ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະ ດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍແລ້ວຈັກໄປເກີດໃນເຜດວິໄສ" ຕໍ່ມາ ເຮົາເຫັນເຂົາຫຼັງຈາກຕາຍແລ້ວໄປເກີດໃນເຜດວິໄສ ສະເຫວີຍທຸກຂະເວທະນາບໍ່ໜ້ອຍ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ຕົ້ນໄມ້ເກີດເທິງພື້ນທີ່ບໍ່ຮາບພຽງ ມີໃບອ່ອນໃບແກ່ໜ້ອຍ ມີເງົາໂລ່ງ ລຳດັບນັ້ນ ບຸຣຸດຜູ້ມີຮ່າງກາຍຖືກຄວາມຮ້ອນແຜດເຜົາ ຄອບງຳ ເມື່ອຍລ້າ ສະທົກສະທ້ານ ຫິວກະຫາຍ ຍ່າງມຸ່ງມາສູ່ຕົ້ນໄມ້ນັ້ນໂດຍຫົນທາງສາຍດຽວ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ບຸຣຸດຜູ້ຈະເລີນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະ ດຳເນີນທາງນັ້ນຈັກມາເຖິງຕົ້ນໄມ້ນີ້ນັ້ນເອງ" ຕໍ່ມາ ບຸຣຸດຜູ້ມີຕາດີນັ້ນຈະເພິ່ງເຫັນເຂົານັ່ງ ຫຼື ນອນທີ່ຮົ່ມເງົາຂອງຕົ້ນໄມ້ນັ້ນ ແລ້ວສະເຫວີຍທຸກຂະເວທະນາບໍ່ໜ້ອຍ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ "ບຸກຄົນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະ ດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍແລ້ວຈັກໄປເກີດໃນເປດວິໄສ" ຕໍ່ມາ ເຮົາເຫັນເຂົາຫຼັງຈາກຕາຍແລ້ວໄປເກີດໃນເປດວິໄສ ສະເຫວີຍທຸກຂະເວທະນາເປັນຈຳນວນຫຼາຍ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ເຮົາກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ "ບຸກຄົນຜູ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະ ດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍແລ້ວຈັກໄປເກີດໃນໝູ່ມະນຸດ" ຕໍ່ມາ ເຮົາເຫັນເຂົາຫຼັງຈາກຕາຍແລ້ວໄປເກີດໃນໝູ່ມະນຸດ ສະເຫວີຍສຸກຂະເວທະນາບໍ່ໜ້ອຍ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ປຽບເໝືອນ ຕົ້ນໄມ້ເກີດເທິງພື້ນທີ່ງຮາບພຽງ ມີໃບອ່ອນໃບແກ່ຫຼາຍ ມີຮົ່ມເງົາຕຶບ ລຳດັບນັ້ນ ບຸຣຸດຜູ້ມີຮ່າງກາຍຖືກຄວາມຮ້ອນແຜດເຜົາ ຄອບງຳ ເມື່ອຍລ້າ ສະທົກສະທ້ານ ຫິວກະຫາຍ ຍ່າງມຸ່ງ ມາສູ່ຕົ້ນໄມ້ນັ້ນໂດຍຫົນທາງສາຍດຽວ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ບຸຣຸດຜູ້ຈະເລີນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນຈັກມາເຖິງຕົ້ນໄມ້ນີ້ນັ້ນເອງ" ຕໍ່ມາ ບຸຣຸດຜູ້ມີຕາດີຈະເພິ່ງເຫັນເຂົານັ່ງ ຫຼື ນອນທີ່ຮົ່ມເງົາຂອງຕົ້ນໄມ້ນັ້ນແລ້ວສະເຫວີຍສຸກຂະເວທະນາບໍ່ໜ້ອຍ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ "ບຸກຄົນນີ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ฯลฯ ເກີດໃນໝູ່ມະນຸດ ສະເຫວີຍສຸກຂະເວທະນາບໍ່ໜ້ອຍ

ເຮົາກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ "ບຸກຄົນຜູ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະ ດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍແລ້ວຈັກໄປເກີດໃນສຸຄະຕິໂລກສະຫວັນ" ຕໍ່ມາ ເຮົາເຫັນເຂົາຫຼັງຈາກຕາຍແລ້ວໄປເກີດໃນສຸຄະຕິໂລກສະຫວັນ ສະເຫວີຍສຸກເວທະນາໂດຍສ່ວນດຽວ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ປຽບເໝືອນ ຜາສາດເຊິ່ງມີເຮືອນຍອດສາບທາແລ້ວທັງພາຍໃນແລະພາຍນອກ ລົມເຂົ້າບໍ່ໄດ້ ມີໄລແໜ້ນ ມີປະຕູແລະປ່ອງຢ້ຽມອັດແຈບດີ ໃນເຮືອນຍອດນັ້ນ ມີບັນລັງທີ່ປູລາດດ້ວຍຜ້າພົມຂົນສັດ ປູລາດດ້ວຍເຄື່ອງປູລາດເຮັດດ້ວຍຂົນແກະສີຂາວ ປູລາດດ້ວຍຂົນສັດເຊິ່ງເຮັດເປັນຮູບດອກໄມ້ ມີເຄື່ອງປູລາດຢ່າງດີເຮັດດ້ວຍໜັງຊະມົດ ມີເພດານກັ້ນຢູ່ເບື້ອງເທິງ ມີໝອນແດງວາງໄວ້ ໒ ຂ້າງ ລຳດັບນັ້ນ ບຸຣຸດຜູ້ມີຮ່າງກາຍຖືກຄວາມຮ້ອນແຜດເຜົາ ຄອບງຳ ເມື່ອຍລ້າສະທົກສະທ້ານ ຫິວກະຫາຍ ຍ່າງມຸ່ງໜ້າ ມາສູ່ຜາສາດນັ້ນໂດຍຫົນທາງສາຍດຽວ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ບຸຣຸດຜູ້ຈະເລີນນີ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນ ແລ້ວຈັກ ມາສູ່ຜາສາດນີ້ຢ່າງແນ່ນອນ" ຕໍ່ມາ ບຸຣຸດຜູ້ມີຕາດີເພິ່ງເຫັນເຂົານັ່ງຫຼືນອນເທິງບັນລັງນັ້ນ ທີ່ເຮືອນຍອດໃນຜາສາດນັ້ນ ສະເຫວີຍສຸກຂະເວທະນາໂດຍສ່ວນດຽວ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ "ບຸກຄົນນີ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະ ດຳເນີນທາງນັ້ນ ຫຼັງຈາກຕາຍແລ້ວຈັກໄປເກີດໃນສຸຄະຕິໂລກສະຫວັນ" ຕໍ່ມາ ເຮົາເຫັນເຂົາຫຼັງຈາກ ຕາຍແລ້ວໄປເກີດໃນສຸຄະຕິໂລກສະຫວັນ ສະເຫວີຍສຸກຂະເວທະນາໂດຍສ່ວນດຽວ ດ້ວຍຕາທິບອັນບໍລິສຸດ ເໜືອມະນຸດ

ເຮົາກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແບບນີ້ວ່າ "ບຸກຄົນຜູ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະ ດຳເນີນທາງນັ້ນແລ້ວ ຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ" ຕໍ່ມາ ເຮົາເຫັນບຸກຄົນນັ້ນຜູ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນ ອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ສະເຫວີຍສຸກຂະເວທະນາໂດຍສ່ວນດຽວ

ປຽບເໝືອນ ສະໂບກຂະຣະນີ ມີນ້ຳໃສ ຈືດ ເຢັນ ສະອາດ ມີທ່າຫຼຽບ ເປັນຕາອອນຊອນ ແລະ ໃນບ່ອນບໍ່ໄກສະໂບກຂະຣະນີນັ້ນ ກໍມີປ່າຕຶບ ລຳດັບນັ້ນ ບຸຣຸດຜູ້ມີຮ່າງກາຍຖືກຄວາມຮ້ອນແຜດເຜົາ ຄອບງຳ ເມື່ອຍລ້າ ສະຫົກສະທ້ານ ຫິວກະຫາຍ ຍ່າງມຸ່ງໜ້າມາສູ່ສະໂບກຂະຣະນີ ໂດຍຫົນທາງສາຍດຽວ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ບຸຣຸດຜູ້ຈະເລີນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວຈັກມາເຖິງສະໂບກຂະຣະນີນີ້ຢ່າງແນ່ນອນ" ຕໍ່ມາ ບຸຣຸດຜູ້ມີຕາດີເພິ່ງເຫັນເຂົາລົງສູ່ສະໂບກຂະຣະນີນັ້ນ ແລ້ວອາບແລະດື່ມ ລະງັບຄວາມກະວົນກະວາຍ ຄວາມເມື່ອຍລ້າແລະຄວາມຮ້ອນໝົດແລ້ວຂຶ້ນໄປນັ່ງ ຫຼືນອນຢູ່ປ່ານັ້ນ ສະເຫວີຍສຸກຂະເວທະນາໂດຍສ່ວນດຽວ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ກຳນົດຮູ້ໃຈຂອງບຸກຄົນລາງຄົນໃນໂລກນີ້ດ້ວຍໃຈແບບນີ້ວ່າ "ບຸກຄົນນີ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ" ຕໍ່ມາ ເຮົາເຫັນ ເຂົາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ສະເຫວີຍສຸກຂະເວທະນາໂດຍສ່ວນດຽວ

ຄະຕິມີ ໕ ປະການນີ້ແລ

ບຸກຄົນໃດເພິ່ງວ່າກ່າວເຮົາຜູ້ຮູ້ຢູ່ ເຫັນຢູ່ແນວນີ້ວ່າ "ສະມະນະໂຄດົມບໍ່ມີຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ "ສະມະນະໂຄດົມສະແດງທຳທີ່ປະມວນມາດ້ວຍຄວາມນຶກຄິດ ດ້ວຍການຄົ້ນຄິດ ຊຶດແຈ້ງໄດ້ດ້ວຍຕົນເອງ" ບຸກຄົນນັ້ນບໍ່ລະວາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຣົກ ເໝືອນຖືກນຳໄປຝັງໄວ້ ອຸປະມາ ເໝືອນພິກຂຸຜູ້ສົມບູນດ້ວຍສີນ ສົມບູນດ້ວຍສະມາທິ ສົມບູນດ້ວຍ ປັນຍາ ເພິ່ງຍິນດີອະຣະຫັດຕະຜົນໃນປັດຈຸບັນ ສັນໃດ ເຮົາກໍກ່າວອຸປະໄມນີ້ສັນນັ້ນ ບຸກຄົນນັ້ນບໍ່ລະວາຈານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ກຳຈັດຖິ້ມທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຣົກເໝືອນຖືກນຳໄປຝັງໄວ້

## ພົມມະຈັນມີອົງ ໔

[໑໕໕] ສາຣີບຸດ ເຮົາຮູ້ຍິ່ງຂໍ້ປະພຶດພົມມະຈັນມີອົງ ໔ ຄື

໑. ເຮົາເປັນຜູ້ພໍາເພັງຕະບະ ແລະ ເປັນຜູ້ພໍາເພັງຕະບະຢ່າງປະເສີດ
໒. ເຮົາເປັນຜູ້ປະພຶດຖືສິ່ງເສົ້າໝອງແລະເປັນຜູ້ປະພຶດຖືສິ່ງເສົ້າໝອງຢ່າງປະເສີດ
໓. ເຮົາເປັນຜູ້ປະພຶດລັງກຽດ (ບາບ) ແລະເປັນຜູ້ປະພຶດລັງກຽດບາບຢ່າງປະເສີດ
໔. ເຮົາເປັນຜູ້ປະພຶດສະຫງັດ ແລະ ເປັນຜູ້ປະພຶດສະຫງັດຢ່າງປະເສີດ

## ການພໍາເພັງຕະບະ

ບັນດາພົມມະຈັນມີອົງ ໔ ນັ້ນ ພົມມະຈັນໃນການພໍາເພັງຕະບະຂອງເຮົາ ຄື ເຮົາເຄີຍເປັນອະເຈລະກະ (ປະພຶດເປືອຍກາຍ) ບໍ່ມີມາຣະຍາດ ເລຍມື ເຂົາເຊີນໃຫ້ໄປຮັບອາຫານກໍບໍ່ໄປ ເຂົາເຊີນໃຫ້ຢຸດຮັບອາຫານກໍບໍ່ຢຸດ ບໍ່ຮັບອາຫານທີ່ເຂົາແບ່ງໄວ້ ບໍ່ຮັບອາຫານທີ່ເຂົາເຮັດເຈາະຈົງ ບໍ່ຍິນດີອາຫານທີ່ເຂົາເຊີນ ເຮົານັ້ນບໍ່ຮັບອາຫານຈາກປາກໝໍ້ ບໍ່ຮັບອາຫານຈາກປາກພາຊະນະ ບໍ່ຮັບອາຫານກວມທໍຣະນີປະຕູ ບໍ່ຮັບອາຫານກວມທ່ອນໄມ້ ບໍ່ຮັບອາຫານກວມສາກ ບໍ່ຮັບອາຫານຂອງຄົນ ໒ ຄົນທີ່ກໍາລັງບໍຣິໂພກຢູ່ ບໍ່ຮັບອາຫານຂອງແມ່ຍິງຖືພາ ບໍ່ຮັບອາຫານຂອງແມ່ຍິງຜູ້ກໍາລັງໃຫ້ບຸດດື່ມນົມ ບໍ່ຮັບອາຫານຂອງຍິງທີ່ກ້ຽວພາຊາຍ ບໍ່ຮັບອາຫານທີ່ນັດແນະກັນເຮັດໄວ້ ບໍ່ຮັບອາຫານໃນບ່ອນລ້ຽງໝາ ບໍ່ຮັບອາຫານໃນບ່ອນມີແມງວັນໄຕ່ຕອມເປັນກຸ່ມ ໆ ບໍ່ກິນປາ ບໍ່ກິນຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມຢາດອງ ເຮົານັ້ນຮັບອາຫານໃນເຮືອນຫຼັງດຽວເປັນຢູ່ດ້ວຍເຂົ້າຄໍາດຽວ ຮັບອາຫານໃນເຮືອນ ໒ ຫຼັງ ເປັນຢູ່ດ້ວຍເຂົ້າ ໒ ຄໍາ ຯລຯ ຮັບອາຫານໃນເຮືອນ ໗ ຫຼັງ ເປັນຢູ່ດ້ວຍເຂົ້າ ໗ ຄໍາ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໑ ໃບ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໒ ໃບ ຯລຯ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໗ ໃບ ກິນອາຫານທີ່ເກັບໄວ້ແຮມຄືນ ໑ ວັນ ກິນອາຫານທີ່ເກັບໄວ້ແຮມຄືນ ໒ ວັນ ຯລຯ ກິນອາຫານທີ່ເກັບໄວ້ແຮມຄືນ ໗ ວັນ ຖືການບໍຣິໂພກອາຫານຕາມວາຣະ ໑໕ ວັນຕໍ່ຄາບ ແນວນີ້ ຢູ່ດ້ວຍປະການແນວນີ້

ເຮົານັ້ນກິນສົ້ມຜັກເປັນອາຫານ ກິນເຂົ້າຟ່າງເປັນອາຫານ ກິນໝາກເດືອຍເປັນອາຫານ ກິນກາກເຂົ້າເປັນອາຫານ ກິນສາຫຣ່າຍເປັນອາຫານ ກິນຮໍາເປັນອາຫານ ກິນເຂົ້າກົ້ນໝໍ້ເປັນອາຫານ ກິນກໍາຍານເປັນອາຫານ ກິນຫຍ້າເປັນອາຫານ ກິນມູນງົວເປັນອາຫານ ກິນເຫງົ້າ ແລະໝາກໄມ້ປ່າເປັນອາຫານ ບໍຣິໂພກໝາກໄມ້ຫຼົ່ນເປັນຢູ່

ເຮົານັ້ນນຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມກັນ ນຸ່ງຫົ່ມຜ້າຫໍ່ສົບ ນຸ່ງຫົ່ມຜ້າບັງສຸກຸນ ນຸ່ງຫົ່ມຜ້າເປືອກໄມ້ ນຸ່ງຫົ່ມໜັງເສືອ ນຸ່ງຫົ່ມໜັງເສືອມີເລັບ ນຸ່ງຫົ່ມຜ້າຄາກອງ ນຸ່ງຫົ່ມຜ້າເປືອກປອກ

ນຸ່ງຫົ່ມຜ້າໝາກໄມ້ກອງ ນຸ່ງຫົ່ມຜ້າກັມພົນຜົມມະນຸດ ນຸ່ງຫົ່ມຜ້າກັມພົນຂົນສັດ ນຸ່ງຫົ່ມຜ້າຂົນປີກນົກເຄົ້າ ເປັນຜູ້ລົກຜົມແລະໜວດ ຄື ຖືການລົກຜມແລະໜວດ ຢືນຢ່າງດຽວບໍ່ຍອມນັ່ງ ຍ່າງຍ່ອງຍໍ້ ຄືຖືການຍ່າງຍ່ອງຍໍ້ ຖືການນອນເທິງໜາມ ຄື ນອນເທິງບ່ອນນອນທີ່ເຮັດດ້ວຍໜາມ ຖືການອາບນ້ຳມື້ລະ ໓ ເທື່ອ⁹ ຖືການກ້າວແລະການອົບກາຍຫຼາຍຮູບແບບແນວນີ້ຢູ່ດ້ວຍປະການແນວນີ້

ນີ້ເປັນພົມມະຈັນໃນການພ່ຳເພັງຕະບະຂອງເຮົາ

## ການປະພຶດຖືສິ່ງເສົ້າໝອງ

[໑໕໖] ບັນດາພົມມະຈັນມີອີງ ໔ ນັ້ນ ພົມມະຈັນໃນການປະພຶດຖືສິ່ງເສົ້າໝອງຂອງເຮົາດັ່ງນີ້ ຄື ມົນທິນຄືທຸລີຝຸ່ນທີ່ໝັກໝົມຢູ່ໃນກາຍ (ຂອງເຮົາ) ນັບຫຼາຍປີຈົນເປັນເກັດ ຕໍໂກທີ່ຕັ້ງຢູ່ນັບຫຼາຍປີ ມີເປືອກແຕກແຍກຈົນເປັນເກັດ ແມ່ນສັນໃດ ມົນທິນຄືຝຸ່ນທີ່ໝັກໝົມຢູ່ໃນກາຍຂອງເຮົານັບຫຼາຍປີຈົນເກີດເປັນເກັດ ກໍສັນນັ້ນຄືກັນ ເຮົານັ້ນບໍ່ໄດ້ມີຄວາມຄິດແນວນີ້ວ່າ "ຖ້າແນວໃດເຮົາຄວນປັດລະອອງຝຸ່ນນີ້ດ້ວຍຝາມື ຫຼື ຄົນເຫຼົ່າອື່ນເພິ່ງປັດລະອອງຝຸ່ນນີ້ຂອງເຮົາດ້ວຍຝາມື" ຄວາມຄິດແມ່ນແນວນີ້ບໍ່ໄດ້ມີແກ່ເຮົາ

ນີ້ເປັນພົມມະຈັນໃນການປະພຶດຖືສິ່ງເສົ້າໝອງຂອງເຮົາ

## ການປະພຶດລັງກຽດ

ບັນດາພົມມະຈັນມີອີງ ໔ ນັ້ນ ພົມມະຈັນໃນການປະພຶດລັງກຽດຂອງເຮົາ ດັ່ງນີ້ ຄື ເຮົານັ້ນ ມີສະຕິ ກ້າວໄປຂ້າງໜ້າ ມີສະຕິຖອຍກັບ ຄວາມອີດູຂອງເຮົາຜາກົດແມ່ນກະທັ່ງໃນຢາດນ້ຳວ່າ "ເຮົາຢ່າໄດ້ລ້າງຜານສັດນ້ອຍ ໆ ທີ່ຢູ່ໃນບ່ອນຕ່າງ ໆ ເລີຍ"

ນີ້ເປັນພົມມະຈັນໃນການປະພຶດລັງກຽດຂອງເຮົາ

## ຄວາມປະພຶດເປັນຜູ້ສະຫງັດ

ບັນດາພົມມະຈັນມີອີງ ໔ ນັ້ນ ພົມມະຈັນໃນການປະພຶດສະຫງັດຂອງເຮົາດັ່ງນີ້ ຄື ເຮົານັ້ນອາໄສຊາຍປ່າແຫ່ງໃດແຫ່ງໜຶ່ງຢູ່ ເມື່ອໃດ ເຮົາໄດ້ພົບຄົນລ້ຽງງົວ ຄົນລ້ຽງ ປະສຸສັດ ຄົນຫາບຫຍ້າ ຄົນຫາຟືນ ຫຼື ຄົນເຮັດວຽກໃນປ່າ⁹ ເມື່ອນັ້ນ ເຮົາຈະຍ່າງໜີຈາກປ່າໜຶ່ງໄປສູ່ປ່າອີກແຫ່ງໜຶ່ງ ຈາກປ່າຕຶບແຫ່ງໜຶ່ງໄປສູ່ປ່າຕຶບອີກແຫ່ງໜຶ່ງ ຈາກບ່ອນລຸ່ມແຫ່ງໜຶ່ງໄປສູ່ບ່ອນລຸ່ມອີກແຫ່ງໜຶ່ງ ຈາກດອນແຫ່ງໜຶ່ງໄປສູ່ດອນອີກແຫ່ງໜຶ່ງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາຄິດວ່າ "ຄົນເຫຼົ່ານັ້ນຢ່າໄດ້ພົບເຮົາ ແລະເຮົາກໍຢ່າໄດ້ພົບຄົນເຫຼົ່ານັ້ນເລີຍ"

ປຽບເໝືອນ ສັດປ່າເຫັນພວກມະນຸດແລ້ວກໍຕະເຫລີດໜີຈາກປ່າແຫ່ງໜຶ່ງໄປສູ່ປ່າອີກແຫ່ງໜຶ່ງ ຈາກປ່າຕຶບແຫ່ງໜຶ່ງໄປສູ່ປ່າຕຶບອີກແຫ່ງໜຶ່ງ ຈາກບ່ອນລຸ່ມແຫ່ງໜຶ່ງໄປສູ່ບ່ອນລຸ່ມອີກແຫ່ງໜຶ່ງ ຈາກດອນແຫ່ງໜຶ່ງໄປສູ່ດອນອີກແຫ່ງໜຶ່ງ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ເມື່ອໃດເຮົາໄດ້ພົບຄົນລ້ຽງງົວ ຄົນລ້ຽງປະສຸສັດ ຄົນຫາບຫຍ້າ ຄົນຫາຟືນ ຫຼື ຄົນເຮັດວຽກໃນປ່າ ເມື່ອນັ້ນ ເຮົາຈະຍ່າງໜີຈາກປ່າແຫ່ງໜຶ່ງໄປສູ່ປ່າອີກແຫ່ງໜຶ່ງ ຈາກປ່າຕຶບແຫ່ງໜຶ່ງໄປສູ່ປ່າຕຶບອີກແຫ່ງໜຶ່ງ ຈາກບ່ອນລຸ່ມແຫ່ງໜຶ່ງໄປສູ່ບ່ອນລຸ່ມອີກແຫ່ງໜຶ່ງ ຈາກດອນແຫ່ງໜຶ່ງໄປສູ່ດອນອີກແຫ່ງໜຶ່ງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາຄິດວ່າ "ຄົນເຫຼົ່ານັ້ນຢ່າໄດ້ພົບເຮົາເລີຍ ແລະ ເຮົາກໍຢ່າໄດ້ພົບຄົນເຫຼົ່ານັ້ນເລີຍ"

ນີ້ເປັນພົມມະຈັນໃນການປະພຶດເປັນຜູ້ສະຫງັດຂອງເຮົາ

ເຮົານັ້ນ ຄານເຂົ້າໄປໃນຄອກທີ່ຝູງງົວອອກໄປແລ້ວ ບໍ່ມີຄົນລ້ຽງງົວຢູ່ ກິນມູນງົວຂອງງົວນ້ອຍຕົວອ່ອນທີ່ຍັງດື່ມນົມ ແລະ ກິນປັດສາວະ ອຸດຈາຣະຂອງຕົນເອງຕະຫຼອດເວລາທີ່ປັດສາວະແລະອຸດຈາຣະຍັງບໍ່ໝົດໄປ ນີ້ເປັນພົມມະຈັນໃນໂພຊະນະມະຫາວິກັດ໌ຂອງເຮົາ

[໑໕໗] ເຮົານັ້ນເຂົ້າອາໄສແນວປ່າເປັນຕາຢ້ານແຫ່ງໃດແຫ່ງໜຶ່ງຢູ່ ທີ່ວ່າເປັນຕາຢ້ານນັ້ນຍ້ອນເປັນແນວປ່າທີ່ເປັນຕາຢ້ານ ຜູ້ໃດຜູ້ໜຶ່ງທີ່ຍັງມີຣາຄະເຂົ້າໄປສູ່ແນວປ່ານັ້ນ ສ່ວນຫຼາຍຍ່ອມຂົນຫົວລຸກ ເຮົານັ້ນຢູ່ທີ່ກາງແຈ້ງຕະຫຼອດທັງຄືນ ໃນຣາຕີທີ່ໜາວເຢັນ ເຊິ່ງຢູ່ລະຫວ່າງເດືອນ ໓ ຕໍ່ເດືອນ ໔ ເປັນເວລາເວລາທີ່ຫິມະຕົກເຫັນປານນັ້ນ (ແຕ່) ຢູ່ໃນແນວປ່າໃນເວລາກາງເວັນ ໃນເດືອນທ້າຍແຫ່ງລະດູຮ້ອນ ເຮົາຢູ່ໃນກາງແຈ້ງໃນເວລາກາງເວັນ ແຕ່ຢູ່ໃນແນວປ່າໃນເວລາກາງຄືນ ຄາຖາໜ້າອັດສະຈັນນີ້ເຮົາບໍ່ເຄີຍໄດ້ຍິນມາກ່ອນ ຜາກົດແກ່ເຮົາ ວ່າ

"ມຸນີຜູ້ເສາະສະແຫວງຫາຄວາມບໍລິສຸດ
ອາບແດດ ອາບນ້ຳໝອກ ເປືອຍກາຍ
ທັງບໍ່ໄດ້ຜີງໄຟ ຢູ່ຄົນດຽວ ໃນປ່າທີ່ເປັນຕາຢ້ານ"

ເຮົານອນແອບອີງກະດູກຜີໃນປ່າຊ້າ ພວກເດັກລ້ຽງງົວ ເຂົ້າໃກ້ເຮົາແລ້ວ ຖົ່ມນ້ຳລາຍຫົດແດ່ ຖ່າຍປັດສາວະຫົດແດ່ ໂຮຍຝຸ່ນລົງແດ່ ເອົາໄມ້ແຍ່ຫູແດ່ ແຕ່ເຮົາບໍ່ຮູ້ສຶກເລີຍວ່າເຮົາມີອະກຸສົນຈິດເກີດຂຶ້ນໃນເດັກເຫຼົ່ານັ້ນ ນີ້ເປັນພົມມະຈັນໃນການຢູ່ດ້ວຍອຸເປກຂາຂອງເຮົາ

## ລັດທິທີ່ວ່າຄວາມບໍລິສຸດມີໄດ້ຍ້ອນອາຫານ

[໑໕໘] ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມບໍລິສຸດມີໄດ້ຍ້ອນອາຫານ" ພວກເຂົາກ່າວແນວນີ້ວ່າ "ພວກເຮົາດຳລົງຊີວິດຢູ່ດ້ວຍໝ່ອຍໝາກກະທັນ"

ພວກເຂົາຫຍໍ້າກິນໝາກກະທັນໜ່ອຍໜຶ່ງແດ່ ໝາກກະທັນປົ່ນແດ່ ດື່ມນໍ້າໝາກກະທັນແດ່ ບໍຣິໂພກໝາກກະທັນທີ່ປຸງແຕ່ງເປັນອາຫານຊະນິດຕ່າງ ໆ ແດ່ ແຕ່ເຮົາກໍຮູ້ຕົວວ່າ "ກິນໝາກກະທັນໜ່ອຍດຽວທໍ່ນັ້ນເປັນອາຫານ" ທ່ານຄົງຈະຄິດແນວນີ້ວ່າ "ສະໄໝນັ້ນ ໝາກກະທັນຄົງຈະໜ່ວຍໃຫຍ່ເປັນແນ່" ແຕ່ທ່ານບໍ່ເພິ່ງເຫັນແນວນັ້ນ ແມ່ນໃນການນັ້ນ ໝາກກະທັນກໍມີໜ່ວຍຂະໜາດທໍ່ໃນບັດນີ້ ເມື່ອເຮົາກິນໝາກກະທັນໜ່ອຍດຽວທໍ່ນັ້ນເປັນອາຫານ ຮ່າງກາຍກໍຈ່ອຍແຫ້ງຫຼາຍ ອະໄວຍະວະ ນ້ອຍໃຫຍ່ຂອງເຮົາປຽບເໝືອນເຄືອເຂົາທີ່ມີຂໍ້ຫຼາຍ ຫຼື ມີຂໍ້ດຳ ຍ້ອນມີອາຫານໜ້ອຍນັ້ນເອງ ຕະໂພກຂອງເຮົາປຽບເໝືອນຮອຍຕີນອູດ ກະດູກສັນຫຼັງຂຶ້ນເປັນປຸ່ມ ໆ ເໝືອນເຄືອໝາກບ້າ ກະດູກຂ້າງເຫຼື່ອມຂຶ້ນເຫຼື່ອມລົງ ເໝືອນກອນສາລາເກົ່າເຫຼື່ອມກັນສັນນັ້ນ ໜ່ວຍຕາກໍເລິກເຂົ້າໄປໃນເບົ້າຕາ ເໝືອນເງົາດວງດາວຜາກົດໃນນໍ້າສ້າງທີ່ເລິກສັນນັ້ນ ໜັງຫົວ ເຊິ່ງຖືກລົມພັດແລ້ວກໍຫ່ຽວແຫ້ງໄປ ປຽບເໝືອນໜ່ວຍໝາດນໍ້າເຕົ້າຂົມທີ່ຖືກຕັດແຕ່ຍັງອ່ອນ ເໝືອຖືກລົມແລະແດດແລ້ວກໍຍ່ອມຫ່ຽວແຫ້ງໄປສັນນັ້ນ ຍ້ອນເຮົາມີອາຫານໜ້ອຍນັ້ນເອງ ເຮົານັ້ນຄິດວ່າ "ຈັກລູບໜັງທ້ອງ" ແຕ່ຄໍາຖືກກະດູກສັນຫຼັງ ຄິດວ່າ "ຈັກລູບກະດູກສັນຫຼັງ" ແຕ່ຄໍາຖືກໜັງທ້ອງ ໜັງທ້ອງຂອງເຮົາຕິດກະດູກສັນຫຼັງ ເຮົານັ້ນຄິດວ່າ "ຈະຖ່າຍອຸດຈາຣະຫຼືປັດສາວະ" ກໍຊວນເຊລົ້ມລົງຢູ່ບ່ອນນັ້ນນັ້ນເອງ ເຮົາເມື່ອຍຈະເຮັດຮ່າງກາຍໃຫ້ສະບາຍກໍລູບຕົວດ້ວຍຝາມື ເມື່ອເຮົາລູບຕົວດ້ວຍຝາມື ຂົນທັງຫຼາຍເຊິ່ງມີຮາກເນົ່າກໍລຸດຫຼົ່ນຈາກກາຍ ຍ້ອນເຮົາມີອາຫານໜ້ອຍນັ້ນເອງ

[໑໕໙] ສາຣີບຸດ ມີສະມະນະພາມພວກໜຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມບໍລິສຸດມີໄດ້ຍ້ອນອາຫານ" ພວກເຂົາກ່າວແນວນີ້ວ່າ "ພວກເຮົາດຳລົງຊີວິດຢູ່ດ້ວຍເມັດຖົ່ວຂຽວ ฯລฯ ພວກເຮົາດຳລົງຊີວິດຢູ່ດ້ວຍເມັດງາ ฯລฯ ພວກເຮົາດຳລົງຊີວິດຢູ່ດ້ວຍເຂົ້າສານ" ພວກເຂົາຫຍໍ້າກິນເຂົ້າສານແດ່ ເຂົ້າປຽນແດ່ ດື່ມນໍ້າເຂົ້າແດ່ ບໍຣິໂພກ ເຂົ້າສານທີ່ປຸງແຕ່ງເປັນຊະນິດຕ່າງ ໆ ແດ່ ແຕ່ເຮົາຮູ້ຕົວວ່າ "ກິນເຂົ້າສານເມັດດຽວທໍ່ນັ້ນເປັນອາຫານ" ທ່ານຄົງຈະຄິດແນວນີ້ວ່າ "ສະໄໝນັ້ນ ເມັດເຂົ້າສານຄົງຈະໃຫຍ່ເປັນແນ່" ແຕ່ທ່ານບໍ່ເພິ່ງເຫັນແນວນັ້ນ ແມ່ນໃນການນັ້ນ ເມັດເຂົ້າສານກໍມີຂະໜາດທໍ່ໃນບັດນີ້ ເມື່ອເຮົາ ກິນເຂົ້າສານເມັດດຽວທໍ່ນັ້ນເປັນອາຫານ ຮ່າງກາຍກໍຈ່ອຍແຫ້ງເປັນຢ່າງຍິ່ງ ອະໄວຍະວະນ້ອຍໃຫຍ່ຂອງເຮົາປຽບເໝືອນເຄືອເຂົາທີ່ມີຂໍ້ຫຼາຍແລະມີຂໍ້ດຳ ຍ້ອນເຮົາມີອາຫານໜ້ອຍນັ້ນເອງ ຕະໂພກຂອງເຮົາປຽບເໝືອນຮອຍຕີນອູດ ກະດູກສັນຫຼັງຂຶ້ນເປັນປຸ່ມ ໆ ເໝືອນເຄືອໝາກບ້າ ກະດູກຂ້າງເຫຼື່ອມຂຶ້ນເຫຼື່ອມລົງເໝືອນກອນສາລາເກົ່າເຫຼື່ອມກັນສັນນັ້ນ ໜ່ວຍຕາກໍເລິກເຂົ້າໄປໃນເບົ້າຕາ ฯລฯ ປຽບເໝືອນນໍ້າເຕົ້າຂົມ ฯລฯ" ເຮົານັ້ນຄິດວ່າ "ຈັກລູບໜັງທ້ອງ ฯລฯ ຈັກຖ່າຍອຸດຈາຣະຫຼືປັດສາວະ ฯລฯ ເຮົາເມື່ອຈະເຮັດຮ່າງກາຍໃຫ້ສະບາຍກໍລູບຕົວດ້ວຍຝາມື ເມື່ອເຮົາລູບຕົວດ້ວຍຝາມື ຂົນທັງຫຼາຍເຊິ່ງມີຮາກເນົ່າກໍລຸດຫຼົ່ນຈາກກາຍ ຍ້ອນເຮົາມີອາຫານໜ້ອຍນັ້ນເອງ

ເຮົາບໍ່ໄດ້ບັນລຸຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ແມ່ນດ້ວຍການປະຕິບັດອັນປະເສີດນັ້ນ ດ້ວຍປະຕິປະທານັ້ນ ແລະ ດ້ວຍການທໍລະມານຕົນທີ່ເຮັດໄດ້ຍາກນັ້ນເລີຍ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຫດຍັງບໍ່ໄດ້ບັນລຸປັນຍາອັນປະເສີດນີ້ ເຊິ່ງເຮົາບັນລຸແລ້ວ ເປັນເຄື່ອງນຳອອກຄືນຳສັດອອກໄປຈາກທຸກເພື່ອຄວາມສິ້ນທຸກໂດຍຊອບສຳລັບບຸກຄົນຜູ້ປະຕິບັດຕາມທຳນັ້ນ

## ລັດທິທີ່ວ່າຄວາມບໍລິສຸດມີໄດ້ຍ້ອນສັງສາຣະວັດເປັນຕົ້ນ

[໑໖໐] ສາຣີບຸດ ມີສະມະນະພາມພວກໜຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມບໍລິສຸດມີໄດ້ຍ້ອນສັງສາຣະວັດ" (ການວຽນວ່າຍຕາຍເກີດ) ສັງສາຣະວັດທີ່ເຮົາບໍ່ເຄີຍທ່ອງທ່ຽວໄປໂດຍກາລະນານນີ້ເປັນສິ່ງທີ່ຫາໄດ້ບໍ່ງ່າຍ ນອກຈາກເທວະໂລກຊັ້ນສຸດທາວາດ ຫາກເຮົາເພິ່ງທ່ອງທ່ຽວໄປໃນເທວະໂລກຊັ້ນສຸດທາວາດ ເຮົາກໍຈຶ່ງຈະບໍ່ມາສູ່ໂລກນີ້ອີກ

ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມບໍລິສຸດ ມີໄດ້ຍ້ອນຄວາມເກີດ" ຄວາມເກີດທີ່ເຮົາບໍ່ເຄີຍປະສົບໂດຍກາລະນານນີ້ເປັນສິ່ງທີ່ຫາໄດ້ບໍ່ງ່າຍ ນອກຈາກເທວະໂລກຊັ້ນສຸດທາວາດ ຫາກເຮົາເພິ່ງເກີດໃນເທວະໂລກຊັ້ນສຸດທາວາດ ເຮົາກໍຈຶ່ງຈະບໍ່ມາສູ່ໂລກນີ້ອີກ

ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມບໍລິສຸດ ມີໄດ້ຍ້ອນອາວາດ[໑]" ບ່ອນທີ່ເຮົາບໍ່ເຄີຍຢູ່ອາໄສແລ້ວໂດຍກາລະນານນີ້ເປັນຂອງຫາໄດ້ບໍ່ງ່າຍ ນອກຈາກເທວະໂລກຊັ້ນສຸດທາວາດ ຫາກເຮົາເພິ່ງຢູ່ໃນເທວະໂລກຊັ້ນສຸດທາວາດ ເຮົາກໍຈຶ່ງຈະບໍ່ມາສູ່ໂລກນີ້ອີກ

ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມບໍລິສຸດມີໄດ້ຍ້ອນການບູຊາຍັນ" ຍັນທີ່ເຮົາຜູ້ເປັນຂັດຕິຍະຣາດເຊິ່ງໄດ້ຮັບມູດທາພິເສກແລ້ວ ຫຼື ເປັນພາມມະນະມະຫາສານບໍ່ເຄີຍບູຊາແລ້ວໂດຍກາລະນານນີ້ເປັນສິ່ງທີ່ຫາໄດ້ບໍ່ງ່າຍ

ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມບໍລິສຸດ ມີໄດ້ຍ້ອນການບຳເລີໄຟ" ໄຟທີ່ເຮົາຜູ້ເປັນຂັດຕິຍະຣາດເຊິ່ງໄດ້ຮັບມູດທາພິເສກແລ້ວ ຫຼື ເປັນພາມມະນະມະຫາສານ ບໍ່ເຄີຍບຳເລີແລ້ວໂດຍກາລະນານ ນີ້ເປັນສິ່ງທີ່ຫາໄດ້ບໍ່ງ່າຍ

## ສັດຜູ້ບໍ່ລຸ່ມຫລົງ

[໑໖໑] ມີສະມະນະພາມພວກໜຶ່ງ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ບຸຣຸດໜຸ່ມຜູ້

ຈະເລີນນີ້ ມີເກສາດຳປອດ ມີໄວໜຸ່ມແໜ້ນເໝາະກັບປະຖົມໄວ ມີປັນຍາສະຫຼຽວສະຫຼາດ ຢ່າງຍິ່ງ ຕໍ່ມາ ບຸຣຸດໜຸ່ມຜູ້ຈະເລີນນີ້ກໍຊະຣາ ແກ່ ເຖົ້າ ລ່ວງການຜ່ານໄວໄປໂດຍລຳດັບ ຄື ມີອາຍຸ ໘໐ ປີແດ່ ໙໐ ປີແດ່ ໑໐໐ ປີແດ່ ຫຼັງຈາກນັ້ນ ເຂົາເສື່ອມຈາກປັນຍາ ຄວາມສະຫຼຽວສະຫຼາດນັ້ນ ຂໍ້ນີ້ທ່ານບໍ່ເພິ່ງເຫັນແນວນັ້ນ ກໍບັດນີ້ ເຮົາຊະຣາ ແກ່ ເຖົ້າ ລ່ວງການ ຜ່ານໄວໄປໂດຍລຳດັບ ເຮົາມີອາຍຸ ໘໐ ປີ ສາວົກບໍລິສັດ ໔ ຂອງເຮົາໃນທຳວິໄນນີ້ມີອາຍຸ ໑໐໐ ປີ ເປັນຢູ່ໄດ້ ໑໐໐ ປີ ມີສະຕິ ມີຄະຕິ ມີທິຕິ[๑] ອັນປະເສີດ ແລະ ມີປັນຍາສະຫຼຽວສະຫຼາດຢ່າງຍິ່ງ

ນັກແມ່ນທະນູໄດ້ຮັບການເຝິກຫັດ ຢ່າງຊ່ຳຊອງ ຊຳນິ ຊຳນານ ເຄີຍສະແດງສີມືມາແລ້ວ ເພິ່ງຍິງງວງຕານທາງດ້ານຂວາງໃຫ້ຕົກລົງໄດ້ໂດຍບໍ່ຍາກດ້ວຍລູກສອນຂະໜາດເບົາແມ່ນສັນໃດ ສາວົກ ບໍລິສັດ ໔ ຂອງເຮົາກໍສັນນັ້ນຄືກັນ ມີສະຕິ ມີຄະຕິ ມີທິຕິອັນປະເສີດແນວນີ້ ມີປັນຍາສະຫຼຽວສະຫຼາດຢ່າງຍິ່ງ

ທ່ານທັງຫຼາຍເພິ່ງຖາມບັນຫາອີງສະຕິປັດຖານ ໔ ກັບເຮົາ ເມືອເຮົາຖືກຖາມແລ້ວຈະເພິ່ງຕອບແກ່ທ່ານທັງຫຼາຍ ທ່ານທັງຫຼາຍເພິ່ງຊົງຈຳຄຳທີ່ເຮົາຕອບແລ້ວໂດຍຊັດແຈ້ງ ທ່ານທັງຫຼາຍບໍ່ຄວນຖາມເຮົາເກີນກວ່າ ໔ ຄັ້ງ ນອກຈາກເລື້ອງການກິນ ການດື່ມ ການຫຍ້ຳ ການຊີມ ການຖ່າຍອຸດຈາຣະແລະປັດສາວະ ການຫຼັບ ແລະ ການບັນເທົາຄວາມເມື່ອຍລ້າ ທຳບັນລະຍາຍຂອງຕະຖາຄົດນັ້ນບໍ່ມີຈົບສິ້ນ ບົດແລະພະຍັນຊະນະຂອງຕະຖາຄົດນັ້ນບໍ່ມີຈົບສິ້ນ ຄວາມແຈ່ມແຈ້ງ ແຫ່ງບັນຫາຂອງຕະຖາຄົດ ນັ້ນບໍ່ມີຈົບສິ້ນ ເມື່ອເປັນເຊັ່ນນັ້ນ ສາວົກບໍລິສັດ ໔ ຂອງເຮົານັ້ນ ມີອາຍຸ ໑໐໐ ປີ ເປັນຢູ່ໄດ້ ໑໐໐ ປີ ເມື່ອລ່ວງ ໑໐໐ ປີໄປກໍຈະເພິ່ງຕາຍ ແມ່ນຖ້າທ່ານທັງຫຼາຍ ຈັກຫາມເຮົາດ້ວຍຕຽງນ້ອຍ ປັນຍາຄວາມສະຫຼຽວສະຫຼາດຂອງຕະຖາຄົດຍ່ອມບໍ່ເປັນແນວອື່ນໄປໄດ້ ບຸກຄົນເມື່ອຈະກ່າວໂດຍຖືກຕ້ອງຈະເພິ່ງກ່າວຄຳນັ້ນກັບເຮົາທີ່ນັ້ນວ່າ “ສັດຜູ້ມີຄວາມບໍ່ລຸ່ມຫຼົງເປັນທຳມະດາ ເກີດຂຶ້ນແລ້ວໃນໂລກ ເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະແກ່ຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ”

## ຄຳນິຄົມ

[໑໙໔] ໃນສະໄໝນັ້ນ ທ່ານພຣະນາກສະມາລະຢືນຖວາຍງານພັດຢູ່ເບື້ອງພຣະປຣິດສະດາງ ຂອງພຣະຜູ້ມີພຣະພາກເຈົ້າ ລຳດັບນັ້ນ ທ່ານພຣະນາກສະມາລະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

“ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ຍ້ອນໄດ້ຟັງທຳບັນລະຍາຍນີ້ ຂ້າພຣະອົງຈຶ່ງເກີດຂົນລຸກຕັ້ງຂຶ້ນແລ້ວ ທຳບັນລະຍາຍນີ້ຊື່ອັນໃດນໍ? ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນາກສະມາລະ ຍ້ອນເຫດນັ້ນ ທ່ານຈົ່ງຈື່ໄວ້ວ່າ "ທຳບັນລະຍາຍນີ້ຊື່ວ່າ ໂລມະຫັງສະນະບັນລະຍາຍ"

ເມື່ອພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະນາກສະມາລະມີໃຈຍິນດີຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາສີຫະນາທະສູດທີ ໒ ຈົບ**

# ໓. ມະຫາທຸກຂັກຂັນທະສູດ

**ວ່າດ້ວຍກອງທຸກ ສູດໃຫຍ່**

## ບັນຫາຂອງປະຣິພາຊົກ

[໑໖໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ເມື່ອໃນເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງສາວັດຖີ ເວລານັ້ນ ພິກຂຸເຫຼົ່ານັ້ນໄດ້ມີຄວາມຄິດວ່າ "ຍັງເຊົ້າຢູ່ທີ່ຈະທ່ຽວໄປບິນທະບາດໃນນະຄອນສາວັດຖີ ທາງທີ່ດີພວກເຮົາເຂົ້າໄປສູ່ອາຣາມຂອງອັນຍະເດຍຣະຖີປະຣິພາຊົກກັນເທີ້ນ" ແລ້ວພາກັນເຂົ້າໄປສູ່ອາຣາມຂອງອັນຍະເດຍຣະຖີປະຣິພາຊົກ ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວຈຶ່ງນັ່ງຢູ່ບ່ອນສົມຄວນ

ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ໄດ້ກ່າວກັບໝູ່ພິກຂຸນັ້ນວ່າ "ທ່ານຜູ້ມີອາຍຸທັງຫຼາຍພຣະສະມະນະໂຄດົມບັນຍັດການລະກາມທັງຫຼາຍ ແມ່ນພວກເຮົາກໍບັນຍັດການລະກາມທັງຫຼາຍພຣະສະມະນະໂຄດົມບັນຍັດການລະຮູບທັງຫຼາຍ ແມ່ນພວກເຮົາກໍບັນຍັດການລະຮູບທັງຫຼາຍພຣະສະມະນະໂຄດົມບັນຍັດການລະເວທະນາທັງຫຼາຍ ແມ່ນພວກເຮົາກໍບັນຍັດການລະເວທະນາທັງຫຼາຍ ໃນຂໍ້ນີ້ ມີຄວາມແປກແຕກຕ່າງກັນແນວໃດ? ມີຄວາມມຸ່ງໝາຍແນວໃດ? ແລະມີການກະທຳຕ່າງກັນແນວໃດ? ລະຫວ່າງການສະແດງທຳ ຫຼື ການບອກສອນຂອງພຣະສະມະນະໂຄດົມກັບການສະແດງທຳ ຫຼື ການບອກສອນຂອງພວກເຮົາ"

ພິກຂຸເຫຼົ່ານັ້ນບໍ່ຍິນດີ ບໍ່ຄັດຄ້ານຄຳທີ່ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນທີ່ກ່າວແລ້ວ

ເມື່ອບໍ່ຍິນດີ ບໍ່ຄັດຄ້ານແລ້ວ ຈຶ່ງລຸກຈາກບ່ອນນັ່ງຈາກໄປດ້ວຍຕັ້ງໃຈວ່າ "ເຮົາທັງຫຼາຍຈັກຮູ້ເນື້ອຄວາມແຫ່ງຄຳກ່າວນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ"

[໑໗໔] ຄັ້ງນັ້ນ ພິກຂຸເຫຼົ່ານັ້ນ ທ່ຽວໄປບິນທະບາດໃນນະຄອນສາວັດຖີ ກັບຈາກບິນທະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ເຊົ້ານີ້ນີ້ ຂ້າພຣະອົງທັງຫຼາຍ ຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປບິນທະບາດໃນເມືອງສາວັດຖີ ຂ້າພຣະອົງທັງຫຼາຍໄດ້ມີຄວາມຄິດວ່າ "ຍັງເຊົ້າຢູ່ທີ່ຈະທ່ຽວໄປບິນທະບາດໃນນະຄອນສາວັດຖີ ທາງທີ່ດີ ພວກເຮົາເຂົ້າໄປສູ່ອາຣາມຂອງອັນຍະເດຍຣະຖີປະຣິພາຊົກກັນເທີ້ນ" ຈຶ່ງພາກັນເຂົ້າໄປສູ່ອາຣາມຂອງອັນຍະເດຍຣະຖີປະຣິພາຊົກ ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວຈຶ່ງນັ່ງຢູ່ບ່ອນສົມຄວນ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນໄດ້ກ່າວກັບຂ້າພຣະອົງທັງຫຼາຍວ່າ "ທ່ານຜູ້ມີອາຍຸທັງຫຼາຍ ພຣະສະມະນະໂຄດົມບັນຍັດການລະກາມທັງຫຼາຍ ແມ່ນພວກເຮົາກໍບັນຍັດການລະກາມທັງຫຼາຍ ພຣະສະມະນະໂຄດົມບັນຍັດການລະຣູບທັງຫຼາຍ ແມ່ນພວກເຮົາກໍບັນຍັດການລະຣູບທັງຫຼາຍ ພຣະສະມະນະໂຄດົມບັນຍັດການລະເວທະນາທັງຫຼາຍ ແມ່ນພວກເຮົາກໍບັນຍັດການລະເວທະນາທັງຫຼາຍ ໃນຂໍ້ນີ້ ມີຄວາມແປກແຕກຕ່າງກັນແນວໃດ? ມີຄວາມມຸ່ງໝາຍແນວໃດ? ແລະ ມີການກະທຳຕ່າງກັນແນວໃດ? ລະຫວ່າງການສະແດງທຳຫຼືການບອກສອນຂອງພຣະສະມະນະໂຄດົມ ກັບການສະແດງທຳ ຫຼື ການບອກສອນຂອງພວກເຮົາ" ຂ້າພຣະອົງທັງຫຼາຍບໍ່ຍິນດີ ບໍ່ຄັດຄ້ານຄຳທີ່ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນທີ່ກ່າວແລ້ວ ເມື່ອບໍ່ຍິນດີ ບໍ່ຄັດຄ້ານແລ້ວຈຶ່ງລຸກຈາກບ່ອນນັ່ງຈາກໄປດ້ວຍຕັ້ງໃຈວ່າ "ເຮົາທັງຫຼາຍຈັກຮູ້ເນື້ອຄວາມແຫ່ງຄຳກ່າວນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ"

## ຄຸນໂທດແລະການກຳຈັດອອກໄປຈາກກາມ

[໑໗໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງກ່າວຕອບ ພວກອັນຍະເດຍຣະຖີປະຣິພາຊົກຜູ້ມີວາທະແນວນັ້ນ ຢ່າງນີ້ວ່າ "ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນການກຳຈັດອອກໄປຈາກກາມທັງຫຼາຍ ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນການກຳຈັດອອກໄປຈາກຣູບທັງຫຼາຍ ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນການກຳຈັດອອກໄປ ຈາກເວທະນາທັງຫຼາຍ" ພວກອັນຍະເດຍຣະຖີປະຣິພາຊົກຖືກທ່ານທັງຫຼາຍຖາມແນວນັ້ນແລ້ວຈັກບໍ່ພໍໃຈ ແລະ ຈັກຕ້ອງເຖິງຄວາມຄັບແຄ້ນຢ່າງຍິ່ງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຂໍ້ນັ້ນບໍ່ແມ່ນວິໄສ ພິກຂຸທັງຫຼາຍ ກໍໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ເມື່ອເວັ້ນຕະຖາຄົດ ສາວົກຂອງຕະຖາຄົດ ຫຼື

ບຸກຄົນຟັງຄຳສັ່ງສອນຂອງເຮົາຕະຖາຄົດສາແລ້ວ ເຮົາຍັງບໍ່ເຫັນຜູ້ທີ່ຈະເພິ່ງເຮັດຈິດໃຫ້ຍິນດີຕອບບັນຫານີ້ໄດ້

[໑໖໖] ພິກຂຸທັງຫຼາຍ ອັນໃດນໍ? ເປັນຄຸນແຫ່ງກາມທັງຫຼາຍ

ຄື ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ຈະຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ຈະຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ຈະຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ຈະຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ຈະຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ກາມມະຄຸນມີ ໕ ປະການນີ້ແລ

ການທີ່ສຸກ ໂສມະນັດເກີດຂຶ້ນຍ້ອນອາໄສກາມມະຄຸນ ໕ ປະການ ນີ້ຊື່ວ່າເປັນຄຸນແຫ່ງກາມທັງຫຼາຍ

[໑໖໗] ພິກຂຸທັງຫຼາຍ ອັນໃດນໍ? ເປັນໂທດແຫ່ງກາມທັງຫຼາຍ

ຄື ກຸນລະບຸດໃນໂລກນີ້ລ້ຽງຊີວິດດ້ວຍການມີສິລະປະໃດ ຄື ດ້ວຍການນັບຄະແນນ ການຄຳນວນ ການນັບຈຳນວນ ການໄຖ ການຄ້າຂາຍ ການລ້ຽງງົວ ການຍິງທະນູ ການຮັບຣາຊະການ ຫຼື ດ້ວຍສິລະປະແນວໃດແນວໜຶ່ງ ອົດທົນຕໍ່ຄວາມໜາວ ຕາກຕຳຕໍ່ຄວາມຮ້ອນ ເດືອດຮ້ອນຍ້ອນສຳຜັດແຫ່ງເຫືອດ ຍຸງ ລົມ ແດດ ແລະສັດເລືອຄານ (ແລະ) ຕາຍຍ້ອນຄວາມຫິວກະຫາຍ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ຖ້າເມື່ອກຸນລະບຸດນັ້ນຂະຫຍັນ ພາກພຽນ ພະຍາຍາມຢູ່ແນວນີ້ ໂພຄະສົມບັດເຫຼົ່ານັ້ນບໍ່ສຳລິດຜົນ ເຂົາຈະຕ້ອງເສົ້າໂສກ ລຳບາກ ຮ່ຳໄຮ ຕີເອິກ ໄຫ້ຈົ່ມ ເຖິງຄວາມຫຼົງປ່ວງວ່າ "ຄວາມຂະຫຍັນຂອງເຮົາເປັນໂມຄະນໍ ຄວາມພະຍາຍາມຂອງເຮົາກໍບໍ່ມີຜົນເລີຍນໍ" ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ຖ້າເມື່ອກຸນລະບຸດນັ້ນ ຂະຫຍັນ ພາກພຽນ ພະຍາຍາມຢູ່ແບບນີ້ ໂພຄະສົມບັດເຫຼົ່ານັ້ນສຳລິດຜົນແກ່ເຂົາ ແລະເຂົ້າຈະຕ້ອງສະເຫວີຍຄວາມທຸກໂທມະນັດອັນມີເຫດມາຈາກການຖືຮັກສາໂພຄະສົມບັດເຫຼົ່ານັ້ນ ວ່າ "ເຮັດແນວໃດນໍ ພຣະຣາຊາຈຶ່ງຈະບໍ່ຍຶດໂພຄະສົມບັດທັງຫຼາຍຂອງເຮົານີ້ໄປ ພວກໂຈນຈຶ່ງຈະບໍ່ລັກໄປ ໄຟຈຶ່ງຈະບໍ່ໄໝ້ ນ້ຳຈຶ່ງຈະບໍ່ພັດໄປ ຫຼື ທາຍາດຜູ້ບໍ່ເປັນທີ່ຮັກຈຶ່ງຈະບໍ່ແຍ່ງໄປ" ເມື່ອກຸນລະບຸດນັ້ນ ຖືຮັກສາຄຸ້ມຄອງຢູ່ແບບນີ້ ແຕ່ຖືກພຣະຣາຊາຍຶດໂພຄະສົມບັດນັ້ນໄປກໍດີ ຖືກພວກໂຈນປຸ້ນເອົາໄປກໍດີ ໄຟໄໝ້ເສຍກໍດີ ນ້ຳພັດໄປກໍດີ ທາຍາດຜູ້ບໍ່ເປັນທີ່ຮັກແຍ່ງເອົາໄປກໍດີ ເຂົາຈຶ່ງຕ້ອງເສົ້າໂສກ ລຳບາກ ຮ່ຳໄຮ ຕີເອິກ ໄຫ້ຈົ່ມ ເຖິງຄວາມຫຼົງປ່ວງວ່າ "ສິ່ງໃດເຄີຍເປັນຂອງເຮົາ ແມ່ນສິ່ງນັ້ນກໍບໍ່ເປັນຂອງເຮົາແລ້ວ"

ພິກຂຸທັງຫຼາຍ ແມ່ນຂໍ້ນີ້ ກໍຊື່ວ່າ ເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

[໑໖໗] ອີກປະການໜຶ່ງ ຍ້ອນກາມເປັນເຫດ ຍ້ອນກາມເປັນຕົ້ນເຫດ ຍ້ອນກາມເປັນເຫດເກີດ ຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ ພຣະຣາຊາຊິງຜິດຖຽງກັບພຣະຣາຊາກໍໄດ້ ກະສັດຜິດຖຽງກັບກະສັດກໍໄດ້ ພາມຜິດຖຽງກັບພາມກໍໄດ້ ຄະຫະບໍດີຜິດຖຽງກັບຄະຫະບໍດີກໍໄດ້ ມານດາຜິດຖຽງກັບບຸດກໍໄດ້ ບຸດຜິດຖຽງກັບມານດາກໍໄດ້ ບິດາຜິດຖຽງກັບບຸດກໍໄດ້ ບຸດຜິດຖຽງກັບບິດາກໍໄດ້ ອ້າຍນ້ອງຊາຍຜິດຖຽງກັບອ້າຍນ້ອງຊາຍກໍໄດ້ ອ້າຍນ້ອງຊາຍຜິດຖຽງກັບເອື້ອຍນ້ອງສາວກໍໄດ້ ເອື້ອຍນ້ອງສາວຜິດຖຽງກັບອ້າຍນ້ອງຊາຍກໍໄດ້ ສະຫາຍຜິດຖຽງກັບສະຫາຍກໍໄດ້ ຊົນເຫຼົ່າໃດກໍ່ການຜິດຖຽງ ກໍ່ການແກ່ງແຍ່ງ ແລະ ກໍ່ການຜິດຖຽງກັນໃນບ່ອນນັ້ນ ໆ ທຳຮ້າຍກັນແລະກັນດ້ວຍຝາມືແດ່ ດ້ວຍກ້ອນດິນແດ່ ດ້ວຍທ່ອນໄມ້ແດ່ ດ້ວຍອາວຸດແດ່ ຊົນເຫຼົ່ານັ້ນ ຈຶ່ງເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່[໑] ແມ່ນຂໍ້ນີ້ ກໍຊື່ວ່າ ເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກປະການໜຶ່ງ ຍ້ອນກາມເປັນເຫດ ຍ້ອນກາມເປັນຕົ້ນເຫດ ຍ້ອນກາມເປັນເຫດເກີດ ຍ້ອນເຫດແຫ່ງກາມທັງຫຼາຍ ຊົນທັງຫຼາຍຖືດາບແລະໂລ່ ຈັບທະນູພາດລູກສອນແລ້ວແລ່ນເຂົ້າສູ່ສົງຄາມ ປະທະກັນທັງ ໒ ຝ່າຍ ເມື່ອພວກເຂົາຍິງລູກສອນໄປແດ່ ພຸ່ງຫອກໄປແດ່ ກວັດແກວ່ງດາບຟັນກັນແດ່ ຊົນເຫຼົ່ານັ້ນຖືກລູກສອນສຽບເອົາແດ່ ຖືກຫອກແທງເອົາແດ່ ຖືກດາບຕັດຫົວແດ່ ຊົນເຫຼົ່ານັ້ນ ຈຶ່ງເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່ ແມ່ນຂໍ້ນີ້ກໍຊື່ວ່າ ເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກປະການໜຶ່ງ ຍ້ອນການເປັນເຫດ ຍ້ອນການເປັນຕົ້ນເຫດ ຍ້ອນການເປັນເຫດເກີດ ຍ້ອນເຫດແຫ່ງການທັງຫຼາຍ ຊົນທັງຫຼາຍຖືດາບແລະໂລ່ ຈັບທະນູພາດລູກສອນແລ້ວແລ່ນເຂົ້າໄປສູ່ຕີນກຳແພງທີ່ສາບດ້ວຍຂີ້ຕົມຮ້ອນ ເມື່ອພວກເຂົາຍິງລູກສອນໄປແດ່ ພຸ່ງຫອກໄປແດ່ ກວັດແກວ່ງດາບຟັນກັນແດ່ ຊົນເຫຼົ່ານັ້ນຖືກລູກສອນສຽບເອົາແດ່ ຖືກຫອກແທງເອົາແດ່ ຖືກຂີ້ງົວຮ້ອນຫົດແດ່ ຖືກຄາດສັບແດ່ ຖືກດາບຕັດຫົວແດ່ ຊົນເຫຼົ່ານັ້ນຈຶ່ງເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່

ພິກຂຸທັງຫຼາຍ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງການທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີການເປັນເຫດ ມີການເປັນຕົ້ນເຫດ ມີການເປັນເຫດເກີດ ເກີດຍ້ອນເຫດແຫ່ງການທັງຫຼາຍນັ້ນແລ

[໑໖໙] ອີກປະການໜຶ່ງ ຍ້ອນການເປັນເຫດ ຍ້ອນການເປັນຕົ້ນເຫດ ຍ້ອນການເປັນເຫດເກີດ ຍ້ອນເຫດແຫ່ງການທັງຫຼາຍ ຊົນທັງຫຼາຍເຈາະປ່ອງຈອບລັກແດ່ ລັກຈົນໝົດກ້ຽງແດ່ ປຸ້ນເຮືອນແດ່ ດັກຈີ້ໃນທາງປ່ຽວແດ່ ລະເມີດພັນລະຍາຜູ້ອື່ນແດ່ ພຣະຣາຊາຮັບສັ່ງໃຫ້ຈັບເຂົາລົງອາຍາດ້ວຍປະການຕ່າງ ໆ ຄື ຂ້ຽນດ້ວຍແສ້ແດ່ ຂ້ຽນດ້ວຍຫວາຍແດ່ ຕີດ້ວຍໄມ້ຄ້ອນແດ່ ຕັດມືແດ່ ຕັດຕີນແດ່ ຕັດທັງມືແລະຕີນແດ່ ຕັດໃບຫູແດ່ ຕັດດັງແດ່ ຕັດທັງໃບຫູແລະດັງແດ່ ວາງກ້ອນເຫຼັກແດງເທິງຫົວແດ່ ລອກໜັງຫົວແລ້ວຂັດໃຫ້ຂາວເໝືອນສັງແດ່ ເອົາໄຟຍັດໃສ່ປາກຈົນເລືອດໄຫຼເໝືອນປາກຣາຫູແດ່ ເອົາຜ້າພັນຕົວຮົດນ້ຳມັນແລ້ວເອົາໄຟເຜົາແດ່ ພັນມືແລ້ວເອົາໄຟເຜົາຕ່າງຄົບແດ່ ລອກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ ລອກໜັງຕັ້ງແຕ່ຄໍເຖິງແອວເຮັດໃຫ້ແນມເບິ່ງຄືວ່ານຸ່ງຜ້າຄາກອງແດ່ ໃສ່ປອກເຫຼັກທີ່ແຂນສອກແລະເຂົ່າແລ້ວສຽບຫຼາວທັງຫ້າທິດເອົາໄຟເຜົາແດ່ ໃຊ້ເບັດເກາະໜັງຊີ້ນເອັນອອກມາແດ່ ປາດຊີ້ນອອກເປັນແວ່ນໆເໝືອນຫຼຽນກະສາບແດ່ ປາດໜັງ ຊີ້ນ ເອັນອອກເຫຼືອໄວ້ແຕ່ກະດູກແດ່ ໃຊ້ຫຼາວແທງຮູຫູໃຫ້ຊອດເຖິງກັນແດ່ ສຽບໃຫ້ຕິດດິນແລ້ວຈັບເຂົາໝຸນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວລອກໜັງອອກເຫຼືອໄວ້ແຕ່ກອງຊີ້ນເໝືອນຕັ່ງໃບໄມ້ແດ່ ຫົດຕົວດ້ວຍນ້ຳມັນທີ່ກຳລັງຮ້ອນຟົດແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ເອົາດາບຕັດຫົວອອກແດ່[១] ຊົນເຫຼົ່ານັ້ນຈຶ່ງເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງການທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີການເປັນເຫດ ມີການເປັນຕົ້ນເຫດ ມີການເປັນເຫດເກີດ ເກີດຍ້ອນເຫດແຫ່ງການທັງຫຼາຍນັ້ນແລ

ອີກປະການໜຶ່ງ ຍ້ອນການເປັນເຫດ ຍ້ອນການເປັນຕົ້ນເຫດ ຍ້ອນການເປັນເຫດເກີດ ຍ້ອນເຫດແຫ່ງການທັງຫຼາຍ ຊົນທັງຫຼາຍປະພຶດກາຍທຸຈະຣິດ ວະຈີທຸຈະຣິດ ແລະ ມະໂນທຸຈະຣິດ ເມື່ອປະພຶດກາຍທຸຈະຣິດ ວະຈີທຸຈະຣິດ ມະໂນທຸຈະຣິດແລ້ວ ຫຼັງຈາກຕາຍແລ້ວຍ່ອມໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກໃນສຳປະຣາຍະພົບ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

[໑໗໐] ພິກຂຸທັງຫຼາຍ ອັນໃດນໍ? ເປັນການກຳຈັດອອກໄປຈາກກາມທັງຫຼາຍ

ຄື ການກຳຈັດສັນທະຣາຄະ[໒] ການລະສັນທະຣາຄະໃນກາມທັງຫຼາຍ ນີ້ຊື່ວ່າ ການກຳຈັດອອກໄປຈາກກາມທັງຫຼາຍ

ສະມະນະ ຫຼື ພາມພວກໃດພວກໜຶ່ງ ບໍ່ຮູ້ແຈ້ງຄຸນແຫ່ງກາມທັງຫຼາຍວ່າເປັນຄຸນ ບໍ່ຮູ້ແຈ້ງໂທດແຫ່ງກາມທັງຫຼາຍວ່າເປັນໂທດ ແລະບໍ່ຮູ້ແຈ້ງການກຳຈັດອອກໄປຈາກກາມທັງຫຼາຍວ່າເປັນການກຳຈັດອອກໄປຕາມຄວາມເປັນຈິງແນວນັ້ນ ເປັນໄປບໍ່ໄດ້ເລີຍທີ່ພວກເຂົາເຫຼົ່ານັ້ນຈັກຮອບຮູ້ກາມທັງຫຼາຍເອງ ຫຼື ຈັກຊັກຊວນຜູ້ອື່ນເພື່ອໃຫ້ຮູ້ແນວນັ້ນ ແລະ ຜູ້ປະຕິບັດແລ້ວກໍຈັກຮອບຮູ້ກາມທັງຫຼາຍໄດ້ ສ່ວນສະມະນະ ຫຼື ພາມພວກໃດພວກໜຶ່ງຮູ້ແຈ້ງຄຸນແຫ່ງກາມທັງຫຼາຍວ່າເປັນຄຸນ ຮູ້ແຈ້ງໂທດແຫ່ງກາມທັງຫຼາຍວ່າເປັນໂທດ ແລະ ຮູ້ແຈ້ງການກຳຈັດອອກໄປຈາກກາມທັງຫຼາຍວ່າເປັນການກຳຈັດອອກໄປຕາມຄວາມເປັນຈິງແນວນັ້ນ ເປັນໄປໄດ້ທີ່ພວກເຂົາເຫຼົ່ານັ້ນຈັກຮອບຮູ້ກາມທັງຫຼາຍໄດ້ເອງ ຫຼື ຈັກຊັກຊວນຜູ້ອື່ນເພື່ອໃຫ້ຮູ້ແນວນັ້ນ ແລະ ຜູ້ປະຕິບັດຕາມແລ້ວກໍຈັກຮອບຮູ້ກາມທັງຫຼາຍໄດ້ ຄຸນ ໂທດ ແລະ ການກຳຈັດອອກໄປຈາກຮູບ

[໑໗໑] ພິກຂຸທັງຫຼາຍ ອັນໃດນໍ? ເປັນຄຸນແຫ່ງຮູບທັງຫຼາຍ

ຄື ກະສັດສາວ ພາມສາວ ຫຼື ຄະຫະບໍດີສາວ ມີອາຍຸ ໑໕ ປີ ຫຼື ໑໖ ປີ ບໍ່ສູງເກີນໄປ ບໍ່ຕ່ຳເກີນໄປ ບໍ່ຈ່ອຍເກີນໄປ ບໍ່ຕຸ້ຍເກີນໄປ ບໍ່ດຳເກີນໄປ ບໍ່ຂາວເກີນໄປ ແມ່ນສັນໃດ ໃນສະໄໝນັ້ນ ຍິງສາວຜູ້ນັ້ນຍ່ອມເປັນຜູ້ງົດງາມ ພຸດຜ່ອງຢ່າງຍິ່ງ ສັນນັ້ນບໍ່ແມ່ນບໍ?"

ພິກຂຸທັງຫຼາຍ ພາກັນຂາບທູນວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ການທີ່ສຸກ ໂສມະນັດເກີດຂຶ້ນຍ້ອນອາໄສຄວາມງາມ ຄວາມພຸດຜ່ອງ ນີ້ຊື່ວ່າ ເປັນຄຸນແຫ່ງຮູບທັງຫຼາຍ

ອັນໃດນໍ? ເປັນໂທດແຫ່ງຮູບທັງຫຼາຍ

ຄື ບຸກຄົນເພິ່ງເຫັນສາວນ້ອຍຄົນນັ້ນໃນໂລກນີ້ໂດຍສະໄໝອື່ນວ່າມີອາຍຸ ໘໐ ປີ ໙໐ ປີ ຫຼື ໑໐໐ ປີໂດຍກຳເນີດ ເປັນຄົນແກ່ ມີກະດູກຂ້າງຄົດດັ່ງກອນເຮືອນ ມີຫຼັງກ່ອມ ຖືໄມ້ຄ້ອນເທົ້າຍ່າງງົກ ໆ ເງິ່ນ ໆ ໄປ ກະສັບກະສ່າຍ ຜ່ານໄວໄປແລ້ວ ແຂ້ວຫຼ່ອນ ຜົມຫງອກ ຫົວໂກ່ນ

ຫົວລ້ານ ໜັງຫ່ຽວ ມີຕົວຕົກກະ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ຄວາມງົດງາມ ຄວາມພຸດຜ່ອງ ແຕ່ກ່ອນນັ້ນຫາຍໄປໄສແລ້ວ ໂທດກໍຜາກົດແຈ້ງແລ້ວບໍ່ແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງຮູບທັງຫຼາຍ"

ອີກປະການໜຶ່ງ ບຸກຄົນເພິ່ງເຫັນສາວນ້ອຍຄົນນັ້ນເຊິ່ງມີອາພາດ ມີທຸກ ປ່ວຍໄຂ້ໜັກ ນອນຈົມປັດສາວະ ແລະ ອຸດຈາຣະຂອງຕົນ ຕ້ອງໃຫ້ຜູ້ອື່ນໂຈມລຸກຂຶ້ນ ຕ້ອງໃຫ້ຜູ້ອື່ນຊ່ອຍໂຊມ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ຄວາມງົດງາມ ຄວາມພຸດຜ່ອງແຕ່ກ່ອນນັ້ນ ຫາຍໄປໄສແລ້ວ ໂທດກໍຜາກົດແຈ້ງແລ້ວບໍ່ແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ແມ່ນຂໍ້ນີ້ ກໍຊື່ວ່າເປັນໂທດແຫ່ງຮູບທັງຫຼາຍ"

[໑໗໔] ອີກປະການໜຶ່ງ ບຸກຄົນເພິ່ງເຫັນສາວນ້ອຍຄົນນັ້ນ ເຊິ່ງເປັນຊາກສົບທີ່ເຂົາຖິ້ມໄວ້ໃນປ່າຊ້າ ຕາຍແລ້ວ ໑ ມື້ແດ່ ໔ ມື້ແດ່ ໓ ມື້ແດ່ ທີ່ໄຄ່ພອງ ມີສີຂຽວເປັນຕາຂີ້ດຽດ ນໍ້າເຫຼືອງໄຫຼເປັນຕາຂີ້ດຽດ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ຄວາມງົດງາມ ຄວາມພຸດຜ່ອງແຕ່ກ່ອນນັ້ນຫາຍໄປໄສແລ້ວ ໂທດກໍຜາກົດແຈ້ງແລ້ວບໍ່ແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ແມ່ນຂໍ້ນີ້ກໍຊື່ວ່າ ເປັນໂທດແຫ່ງຮູບທັງຫຼາຍ"

ອີກປະການໜຶ່ງ ບຸກຄົນເພິ່ງເຫັນສາວນ້ອຍຄົນນັ້ນ ເຊິ່ງເປັນຊາກສົບທີ່ເຂົາຖິ້ມໄວ້ໃນປ່າຊ້າ ຖືກກາຕອດກິນແດ່ ແຮ້ງຍາດກັນຢູ່ແດ່ ນົກຕະກຸມຕອດກິນແດ່ ໝາກັດກິນຢູ່ແດ່ ໝາຈິ້ງຈອກກັດກິນຢູ່ແດ່ ສັດນ້ອຍ ໆ ຫຼາຍຊະນິດກັດກິນຢູ່ແດ່ ທ່ານທັງຫຼາຍເຂົ້າໃຈ ຄວາມຂໍ້ນັ້ນວ່າແນວໃດ ຄວາມງົດງາມ ຄວາມພຸດຜ່ອງແຕ່ກ່ອນນັ້ນຫາຍໄປແລ້ວ ໂທດກໍ ຜາກົດແຈ້ງແລ້ວບໍ່ແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ແມ່ນຂໍ້ນີ້ກໍຊື່ວ່າ ເປັນໂທດແຫ່ງຮູບທັງຫຼາຍ"

ອີກປະການໜຶ່ງ ບຸກຄົນເພິ່ງເຫັນສາວນ້ອຍຄົນນັ້ນເຊິ່ງເປັນຊາກສົບທີ່ເຂົາຖິ້ມໄວ້ໃນປ່າຊ້າ ເປັນຮ່າງກະດູກ ຍັງມີຊີ້ນແລະເລືອດ ມີເສັ້ນເອັນກ່ຽວຮັດ ຯລຯ ເປັນຮ່າງກະດູກ ບໍ່ມີຊີ້ນແຕ່ເປື້ອນເລືອດ ມີເສັ້ນເອັນກ້ອຍຮັດ ຯລຯ ເປັນຮ່າງກະດູກ ບໍ່ມີຊີ້ນແລະເລືອດ ມີເສັ້ນເອັນກ່ຽວຮັດ ຯລຯ ເປັນຮ່າງກະດູກ ບໍ່ມີເສັ້ນເອັນເອັນກ່ຽວ ກະຈັດກະຈາຍໄປທົ່ວທຸກທິດ ຄື ກະດູກ

ມືຢູ່ທາງໜຶ່ງ ກະດູກຕີນຢູ່ທາງໜຶ່ງ ກະດູກແຄ່ງຢູ່ທາງໜຶ່ງ ກະດູກຂາຢູ່ທາງໜຶ່ງ ກະດູກແອວຢູ່ທາງໜຶ່ງ ກະດູກສັນຫຼັງຢູ່ທາງໜຶ່ງ ກະດູກຂ້າງຢູ່ທາງໜຶ່ງ ກະດູກໜ້າເອິກຢູ່ທາງໜຶ່ງ ກະດູກແຂນຢູ່ທາງໜຶ່ງ ກະດູກບ່າໄຫຼ່ຢູ່ທາງໜຶ່ງ ກະດູກຄໍຢູ່ທາງໜຶ່ງ ກະດູກຄາງຢູ່ທາງໜຶ່ງ ກະດູກແຂ້ວຢູ່ທາງໜຶ່ງ ກະໂຫຼກຫົວຢູ່ທາງໜຶ່ງ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄວາມງົດງາມ ຄວາມພຸດຜ່ອງແຕ່ກ່ອນນັ້ນຫາຍໄປແລ້ວ ໂທດກໍຜາກົດແຈ້ງແລ້ວບໍ່ແມ່ນບໍ"

"ແມ່ນແລ້ວ ຂ້ານ້ອຍ"

"ແມ່ນຂໍ້ນີ້ກໍຊື່ວ່າ ເປັນໂທດແຫ່ງອົງທັງຫຼາຍ"

ອີກປະການໜຶ່ງ ບຸກຄົນເພິ່ງເຫັນສາວນ້ອຍຄົນນັ້ນເຊິ່ງເປັນຊາກສົບທີ່ເຂົາຖິ້ມໄວ້ໃນປ່າຊ້າເຫຼືອແຕ່ກະດູກສີຂາວ ປຽບເໝືອນສັງ ຯລຯ ເຫຼືອແຕ່ທ່ອນກະດູກເປັນກອງ ໆ ຕົກຄ້າງມາແຮມປີ ຯລຯ ເປັນກະດູກໂດກມຸ່ນເປັນຝຸ່ນທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ຄວາມງົດງາມ ຄວາມພຸດຜ່ອງແຕ່ກ່ອນນັ້ນຫາຍໄປໄສແລ້ວ ໂທດກໍຜາກົດແຈ້ງແລ້ວບໍ່ແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ແມ່ນຂໍ້ນີ້ກໍຊື່ວ່າ ເປັນໂທດແຫ່ງຮູບທັງຫຼາຍ"

ອັນໃດນໍ? ເປັນການກຳຈັດອອກໄປຈາກຮູບທັງຫຼາຍ

ຄື ການກຳຈັດສັນທະຣາຄະ ການລະສັນທະຣາຄະໃນຮູບທັງຫຼາຍ ນີ້ຊື່ວ່າ ການກຳຈັດອອກໄປຈາກຮູບທັງຫຼາຍ

ສະມະນະຫຼືພາມພວກໃດພວກໜຶ່ງ ບໍ່ຮູ້ແຈ້ງຄຸນແຫ່ງຮູບທັງຫຼາຍວ່າ ເປັນຄຸນ ບໍ່ຮູ້ແຈ້ງໂທດແຫ່ງຮູບທັງຫຼາຍວ່າເປັນໂທດ ແລະ ບໍ່ຮູ້ແຈ້ງການກຳຈັດອອກໄປຈາກຮູບທັງຫຼາຍວ່າເປັນການກຳຈັດອອກໄປຕາມຄວາມເປັນຈິງແນວນັ້ນ ເປັນໄປບໍ່ໄດ້ເລີຍທີ່ພວກເຂົາເຫຼົ່ານັ້ນຈັກຮອບຮູ້ຮູບທັງຫຼາຍໄດ້ເອງ ຫຼື ຈັກຊັກຊວນຜູ້ອື່ນເພື່ອໃຫ້ຮູ້ແນວນັ້ນ ແລະ ຜູ້ປະຕິບັດຕາມແລ້ວກໍຈັກຮອບຮູ້ຮູບທັງຫຼາຍໄດ້

ພິກຂຸທັງຫຼາຍ ສ່ວນສະມະນະ ຫຼື ພາມພວກໃດພວກໜຶ່ງ ຮູ້ແຈ້ງຄຸນແຫ່ງຮູບທັງຫຼາຍວ່າເປັນຄຸນ ຮູ້ແຈ້ງໂທດແຫ່ງຮູບທັງຫຼາຍວ່າເປັນໂທດ ແລະ ຮູ້ແຈ້ງການກຳຈັດອອກໄປຈາກຮູບທັງຫຼາຍວ່າເປັນການກຳຈັດອອກໄປຕາມຄວາມເປັນຈິງແນວນັ້ນ ເປັນໄປໄດ້ທີ່ພວກເຂົາເຫຼົ່ານັ້ນຈັກຮອບຮູ້ຮູບທັງຫຼາຍໄດ້ເອງ ຫຼື ຈັກຊັກຊວນຜູ້ອື່ນເພື່ອໃຫ້ຮູ້ແນວນັ້ນ ແລະ ຜູ້ປະຕິບັດຕາມແລ້ວກໍຈັກຮອບຮູ້ຮູບທັງຫຼາຍໄດ້

## ຄຸນໂທດແລະການກຳຈັດອອກໄປຈາກເວທະນາ

[໑໓໖] ພິກຂຸທັງຫຼາຍ ອັນໃດນໍ? ເປັນຄຸນແຫ່ງເວທະນາທັງຫຼາຍ

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ໃນສະໄໝໃດ ພິກຂຸສະຫງັດຈາກກາມແລະອະກຸສົນ ທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ໃນສະໄໝນັ້ນ ພິກຂຸບໍ່ຄິດມຸ່ງບຽດບຽນຕົນ ບໍ່ຄິດມຸ່ງບຽດບຽນຜູ້ອື່ນ ທັງບໍ່ຄິດມຸ່ງບຽດບຽນທັງສອງຝ່າຍ ໃນສະໄໝນັ້ນ ທ່ານຈຶ່ງສະເຫວີຍເວທະນາເຊິ່ງບໍ່ມີການບຽດບຽນ ນັ້ນແລ ເຮົາກ່າວວ່າຄວາມບໍ່ມຸ່ງບຽດບຽນກັນ ເປັນຄຸນແຫ່ງເວທະນາທັງຫຼາຍ

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ໃນສະໄໝໃດ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ໃນສະໄໝນັ້ນ ທ່ານຍ່ອມບໍ່ຄິດມຸ່ງບຽດບຽນຕົນ ຯລຯ ເຮົາກ່າວວ່າຄວາມບໍ່ຄິດມຸ່ງບຽດບຽນກັນ ເປັນຄຸນແຫ່ງເວທະນາທັງຫຼາຍ

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ “ຜູ້ມີອຸເປກຂາມີສະຕິ ຢູ່ເປັນສຸກ” ໃນສະໄໝໃດ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ຯລຯ ໃນສະໄໝນັ້ນ ພິກຂຸຍ່ອມບໍ່ຄິດມຸ່ງບຽດບຽນຕົນ ຯລຯ ເຮົາກ່າວວ່າຄວາມບໍ່ຄິດມຸ່ງບຽດບຽນກັນ ເປັນຄຸນແຫ່ງເວທະນາທັງຫຼາຍ

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປ ກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ໃນສະໄໝໃດ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ພິກຂຸ ບັນລຸຈະຕຸດຖະຊານ ຯລຯ ໃນສະໄໝນັ້ນ ພິກຂຸຍ່ອມບໍ່ຄິດມຸ່ງບຽດບຽນຕົນ ບໍ່ຄິດມຸ່ງ ບຽດບຽນຜູ້ອື່ນ ທັງບໍ່ຄິດມຸ່ງບຽດບຽນທັງ ໒ ຝ່າຍ

ພິກຂຸທັງຫຼາຍ ເຮົາກ່າວວ່າ ຄວາມບໍ່ຄິດມຸ່ງບຽດບຽນກັນ ເປັນຄຸນແຫ່ງເວທະນາທັງຫຼາຍ

[໑໓໔] ພິກຂຸທັງຫຼາຍ ອັນໃດນໍ? ເປັນໂທດແຫ່ງເວທະນາທັງຫຼາຍ

ຄື ການທີ່ເວທະນາບໍ່ທ່ຽງ ເປັນທຸກ ມີຄວາມຜັນປ່ຽນເປັນທຳມະດາ ນີ້ຊື່ວ່າ ໂທດແຫ່ງເວທະນາທັງຫຼາຍ

ອັນໃດນໍ? ເປັນການກຳຈັດອອກໄປຈາກເວທະນາທັງຫຼາຍ

ຄື ການກຳຈັດສັນທະຣາຄະ ການລະສັນທະຣາຄະໃນເວທະນາທັງຫຼາຍໄດ້ນີ້ຊື່ວ່າການກຳຈັດອອກໄປຈາກເວທະນາທັງຫຼາຍ

ສະມະນະ ຫຼື ພາມພວກໃດພວກໜຶ່ງ ບໍ່ຮູ້ແຈ້ງຄຸນແຫ່ງເວທະນາທັງຫຼາຍວ່າເປັນຄຸນ ບໍ່ຮູ້ແຈ້ງໂທດແຫ່ງເວທະນາທັງຫຼາຍວ່າເປັນໂທດ ແລະ ບໍ່ຮູ້ແຈ້ງການກຳຈັດອອກໄປຈາກເວທະນາທັງຫຼາຍວ່າເປັນການກຳຈັດອອກໄປຕາມຄວາມເປັນຈິງແນວນັ້ນ ເປັນໄປບໍ່ໄດ້ເລີຍທີ່ພວກເຂົາເຫຼົ່ານັ້ນຈັກຮອບຮູ້ເວທະນາທັງຫຼາຍໄດ້ເອງ ຫຼື ຈັກຊັກຊວນຜູ້ອື່ນເພື່ອໃຫ້ຮູ້ແນວນັ້ນ ແລະຜູ້ປະຕິບັດຕາມແລ້ວກໍຈັກຮອບຮູ້ເວທະນາທັງຫຼາຍໄດ້

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມພວກໃດພວກໜຶ່ງຮູ້ແຈ້ງຄຸນແຫ່ງເວທະນາທັງຫຼາຍວ່າເປັນຄຸນ ຮູ້ແຈ້ງໂທດແຫ່ງເວທະນາທັງຫຼາຍວ່າເປັນໂທດ ແລະ ຮູ້ແຈ້ງການກຳຈັດອອກໄປຈາກເວທະນາທັງຫຼາຍວ່າເປັນການກຳຈັດອອກໄປຕາມຄວາມເປັນຈິງແນວນັ້ນ ເປັນໄປໄດ້ທີ່ພວກເຂົາເຫຼົ່ານັ້ນ ຈັກຮອບຮູ້ເວທະນາທັງຫຼາຍໄດ້ເອງ ຫຼື ຈັກຊັກຊວນຜູ້ອື່ນເພື່ອໃຫ້ຮູ້ແນວນັ້ນ ແລະຜູ້ປະຕິບັດຕາມແລ້ວກໍຈັກຮອບຮູ້ເວທະນາທັງຫຼາຍໄດ້”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊື່ນຊົມພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາທຸກຂັກຂັນທະສູດທີ ໓ ຈົບ**

# ໔. ຈູລະທຸກຂັກຂັນທະສູດ

## ວ່າດ້ວຍກອງທຸກ ສູດນ້ອຍ

[໑໗໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນະ ນິໂຄທາຣາມ ເຂດເມືອງກະບິນລະພັດໃນແຄວ້ນສັກກະ ຄັ້ງນັ້ນ ເຈົ້າສາກະຍະພຣະນາມວ່າມະຫານາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວສິ້ນການລະນານແນວນີ້ວ່າ “ໂລພະເປັນອຸປະກິເລດແຫ່ງຈິດ ໂທສະເປັນອຸປະກິເລດແຫ່ງຈິດ ໂມຫະເປັນອຸປະກິເລດແຫ່ງຈິດ” ເມື່ອເປັນເຊັ່ນນັ້ນ ບາງເວລາ ໂລພະທຳຍັງຄອບ

ງຳຈິດຂອງຂ້າພຣະອົງໄວ້ໄດ້ແດ່ ໂທສະທຳຍັງຄອບງຳຈິດຂອງຂ້າພຣະອົງໄວ້ໄດ້ແດ່ ໂມຫະທຳຍັງຄອບງຳຈິດຂອງຂ້າພຣະອົງໄວ້ໄດ້ແດ່ ຂ້າພຣະອົງມີຄວາມຄິດແນວນີ້ວ່າ "ທຳອັນໃດນໍ? ທີ່ຂ້າພຣະອົງຍັງລະບໍ່ໄດ້ໃນພາຍໃນ ເຊິ່ງເປັນເຫດໃຫ້ໂລພະທຳຍັງຄອບງຳຈິດຂອງຂ້າພຣະອົງໄວ້ໄດ້ແດ່ ໂທສະທຳຍັງຄອບງຳຈິດຂອງຂ້າພຣະອົງໄວ້ໄດ້ແດ່ ໂມຫະທຳຍັງຄອບງຳຈິດຂອງຂ້າພຣະອົງໄວ້ໄດ້ແດ່ເປັນບາງເທື່ອ"

[໑໗໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫານາມ ທຳໃນພາຍໃນນັ້ນແລ ທ່ານຍັງລະບໍ່ໄດ້ ເຊິ່ງເປັນເຫດໃຫ້ໂລພະທຳຄອບງຳຈິດຂອງທ່ານໄວ້ໄດ້ແດ່ ໂທສະທຳຄອບງຳຈິດຂອງທ່ານໄວ້ໄດ້ແດ່ ໂມຫະທຳຄອບງຳຈິດຂອງທ່ານໄວ້ໄດ້ແດ່ເປັນບາງເທື່ອ ຖ້າທ່ານຈັກລະ ທຳໃນພາຍໃນນັ້ນໄດ້ແລ້ວ ທ່ານກໍຈຶ່ງຈະບໍ່ຢູ່ຄອງເຮືອນ ບໍ່ເພິ່ງບໍຣິໂພກກາມ ແຕ່ຍ້ອນ ທ່ານລະທຳໃນພາຍໃນນັ້ນຍັງບໍ່ໄດ້ ທ່ານຈຶ່ງຍັງຢູ່ຄອງເຮືອນ ຍັງບໍຣິໂພກກາມ

[໑໗໗] ແມ່ນຫາກອະຣິຍະສາວົກເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າ "ກາມທັງຫຼາຍ ມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່" ກໍຕາມ ແຕ່ອະຣິຍະສາວົກນັ້ນ ກໍຍັງບໍ່ບັນລຸຊານທີ່ມີປີຕິແລະສຸກ[໑] ທີ່ປາສະຈາກກາມທັງຫຼາຍ ປາສະຈາກອະກຸສົນທຳທັງຫຼາຍ ຫຼື ຍັງບໍ່ບັນລຸທຳອື່ນທີ່ສະງົບກວ່າຊານທັງ ໔ ນັ້ນ ດັ່ງນັ້ນເຂົາຈຶ່ງຊື່ວ່າ ບໍ່ແມ່ນຈະບໍ່ວຽນມາຫາກາມທັງຫຼາຍອີກ[໑] ແຕ່ເມື່ອໃດ ອະຣິຍະສາວົກເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຊອບແນວນີ້ວ່າ "ກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດຍິ່ງໃຫຍ່" ອະຣິຍະສາວົກນັ້ນ ຍ່ອມບັນລຸຊານທີ່ມີປີຕິ ແລະ ສຸກທີ່ປາສະຈາກກາມທັງຫຼາຍ ປາສະຈາກອະກຸສົນທຳທັງຫຼາຍ ຫຼື ບັນລຸທຳອື່ນທີ່ສະງົບກວ່າຊານທັງ ໔ ນັ້ນ ເມື່ອນັ້ນ ເຂົາຈຶ່ງຊື່ວ່າ ຍ່ອມບໍ່ວຽນມາຫາກາມທັງຫຼາຍອີກ ມະຫານາມ ກ່ອນການຕັດສະຣູ້ ແມ່ນເມື່ອຄັ້ງເຮົາເປັນໂພທິສັດຍັງບໍ່ໄດ້ຕັດສະຣູ້ ເຮົາກໍເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຊອບແນວນີ້ວ່າ "ກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່" ກໍຕາມ ແຕ່ເຮົາກໍຍັງບໍ່ບັນລຸຊານ ທີ່ມີປີຕິແລະສຸກທີ່ປາສະຈາກກາມທັງຫຼາຍ ປາສະຈາກອະກຸສົນທຳທັງຫຼາຍ ຫຼື ຍັງບໍ່ບັນລຸທຳອື່ນທີ່ສະງົບກວ່າຊານທັງ ໔ ນັ້ນ ດັງນັ້ນເຮົາຈຶ່ງບໍ່ກ້າປະຕິຍານວ່າຈະບໍ່ວຽນມາຫາກາມທັງຫຼາຍອີກ ແຕ່ເມື່ອໃດ ເຮົາເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຊອບແນວນີ້ວ່າ "ກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່" ເຮົາໄດ້ບັນລຸຊານທີ່ມີປີຕິ ແລະ ສຸກທີ່ປາສະຈາກກາມທັງຫຼາຍ ປາສະຈາກອະກຸສົນທຳທັງຫຼາຍ ຫຼື ບັນລຸທຳອື່ນທີ່ສະງົບກວ່າຊານທັງ ໔ ນັ້ນ ເມື່ອນັ້ນ ເຮົາຈຶ່ງກ້າປະຕິຍານວ່າ ເຮົາຈະບໍ່ວຽນມາຫາກາມທັງຫຼາຍອີກ

## ຄຸນແຫ່ງກາມ

[໑໗໘] ມະຫານາມະ ອັນໃດນໍ? ເປັນຄຸນແຫ່ງກາມທັງຫຼາຍ

ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແນ ຄື

໑. ຮູບທີ່ຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໒. ສຽງທີ່ຮູ້ແຈ້ງທາງຫູ ຯລຯ

໓. ກິ່ນທີ່ຮູ້ແຈ້ງທາງດັງ ຯລຯ

໔. ຣົດທີ່ຮູ້ແຈ້ງທາງລີ້ນ ຯລຯ

໕. ໂຜດຖັບພະທີ່ຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ກາມມະຄຸນມີ ໕ ປະການນີ້ແລ

ການທີ່ສຸກ ໂສມະນັດເກີດຂຶ້ນຍ້ອນອາໄສກາມມະຄຸນ ໕ ປະການ ນີ້ຊື່ວ່າເປັນຄຸນແຫ່ງກາມທັງຫຼາຍ

## ໂທດແຫ່ງກາມ

ອັນໃດນໍ? ເປັນໂທດແຫ່ງກາມທັງຫຼາຍ

ຄື ກຸນລະບຸດໃນໂລກນີ້ລ້ຽງຊີວິດດ້ວຍການປະກອບສິລະປະໃດ ຄື ດ້ວຍການນັບຄະແນນ ການຄຳນວນ ການນັບຈຳນວນການໄຖ ການຄ້າຂາຍ ການລ້ຽງງົວ ການຍິງທະນູ ການຮັບຣາຊະການ ຫຼື ດ້ວຍສິລະປະແນວໃດແນວໜຶ່ງ ອົດທົນຕໍ່ຄວາມໜາວ ຕາກຕຳຕໍ່ຄວາມຮ້ອນ ເດືອດຮ້ອນຍ້ອນສຳຜັດແຫ່ງເຮືອດ ຍຸງ ລົມ ແດດ ແລະສັດເລືອຄານ (ແລະ) ຕາຍຍ້ອນຄວາມຫິວໂຫຍ ແມ່ນຂໍ້ນີ້ກໍຊື່ວ່າ ເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງມີການເປັນເຫດມີການເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ຖ້າເມື່ອກຸນລະບຸດນັ້ນຂະຫຍັນ ພາກພຽນ ພະຍາຍາມຢູ່ແນວນີ້ ໂພຄະສົມບັດເຫຼົ່ານັ້ນບໍ່ສຳລິດຜົນ ເຂົາຕ້ອງເສົ້າໂສກ ລຳບາກ ໄຫ້ຈົ່ມ ຕີເອິກ ຮ່ຳໄຮ ເຖິງຄວາມຫຼົງປ່ວງວ່າ “ຄວາມຂະຫຍັນຂອງເຮົາເປັນໂມຄະນໍ ຄວາມພະຍາຍາມຂອງເຮົາກໍບໍ່ມີຜົນເລີຍນໍ” ແມ່ນຂໍ້ນີ້ ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ຖ້າເມື່ອກຸນລະບຸດນັ້ນຂະຫຍັນ ພາກພຽນ ພະຍາຍາມຢູ່ແນວນີ້ ໂພຄະສົມບັດເຫຼົ່ານັ້ນສຳລິດຜົນແກ່ເຂົາ ແຕ່ເຂົາຕ້ອງສະເຫວີຍທຸກໂທມະນັດອັນມີເຫດມາຈາກການຖືຮັກສາໂພຄະສົມບັດເຫຼົ່ານັ້ນວ່າ “ເຮັດແນວໃດ ພຣະຣາຊາຈຶ່ງຈະບໍ່ຢຶດໂພຄະສົມບັດທັງຫຼາຍຂອງເຮົາ ພວກໂຈນຈຶ່ງຈະບໍ່ລັກໄປ ໄຟຈຶ່ງຈະບໍ່ໄໝ້ ນ້ຳຈຶ່ງຈະບໍ່ພັດໄປ ຫຼື ທາຍາດຜູ້ບໍ່ເປັນທີ່ຮັກຈຶ່ງຈະບໍ່ແຍ່ງໄປ” ເມື່ອກຸລະບຸດນັ້ນຖືຮັກສາຄຸ້ມຄອງຢູ່ແນວນີ້ ພຣະຣາຊາຢຶດໂພຄະສົມບັດນັ້ນໄປກໍດີ ພວກໂຈນປຸ້ນເອົາໄປກໍດີ ໄຟໄໝ້ເສຍກໍດີ ນ້ຳພັດໄປກໍດີ ທາຍາດຜູ້ບໍ່ເປັນທີ່ຮັກແຍ່ງເອົາໄປກໍດີ ເຂົາເສົ້າໂສກ ລຳບາກ ໄຫ້ຈົ່ມ ຕີເອິກ ຮ່ຳໄຮ ເຖິງຄວາມຫຼົງປ່ວງວ່າ “ສິ່ງໃດເຄີຍເປັນຂອງເຮົາ ແມ່ນສິ່ງນັ້ນກໍບໍ່ເປັນຂອງເຮົາ” ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກປະການໜຶ່ງ ຍ້ອນກາມເປັນເຫດ ຍ້ອນກາມເປັນຕົ້ນເຫດ ຍ້ອນກາມເປັນເຫດເກີດ ຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ ພຣະຣາຊາຊິງຜິດຖຽງກັບພຣະຣາຊາກໍໄດ້ ກະສັດຜິດຖຽງກັບກະສັດກໍໄດ້ ພາມຜິດຖຽງກັບພາມກໍໄດ້ ຄະຫະບໍດີຜິດຖຽງກັບຄະຫະບໍດີກໍໄດ້ ມານດາຜິດຖຽງກັບບຸດກໍໄດ້ ບຸດຜິດຖຽງກັບມານດາກໍໄດ້ ບິດາຜິດຖຽງກັບບຸດກໍໄດ້ ບຸດຜິດຖຽງກັບບິດາກໍໄດ້ ອ້າຍນ້ອງຊາຍຜິດຖຽງກັບອ້າຍຊາຍນ້ອງຊາຍກໍໄດ້ ອ້າຍນ້ອງຊາຍຜິດຖຽງກັບເອື້ອຍນ້ອງສາວກໍໄດ້ ເອື້ອຍນ້ອງສາວຜິດຖຽງກັບອ້າຍນ້ອງຊາຍກໍໄດ້ ສະຫາຍຜິດຖຽງກັບສະຫາຍກໍໄດ້ ຊົນເຫຼົ່ານັ້ນກໍ່ການຜິດຖຽງ ກໍ່ການແກ່ງແຍ່ງ ແລະ ກໍ່ການຜິດຖຽງກັນໃນບ່ອນນັ້ນ ທຳຮ້າຍກັນແລະກັນດ້ວຍຝາມືແດ່ ດ້ວຍກ້ອນດິນແດ່ ດ້ວຍທ່ອນໄມ້ແດ່ ດ້ວຍອາວຸດແດ່ ຊົນເຫຼົ່ານັ້ນຈຶ່ງເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກປະການໜຶ່ງ ຍ້ອນກາມເປັນເຫດ ຍ້ອນກາມເປັນຕົ້ນເຫດ ຍ້ອນກາມເປັນເຫດເກີດ ຍ້ອນເຫດແຫ່ງກາມທັງຫຼາຍ ຊົນທັງຫຼາຍຖືດາບແລະໂລ່ ຈັບທະນູພາດລູກສອນແລ້ວແລ່ນເຂົ້າສູ່ສົງຄາມ ປະທະກັນທັງ ໔ ຝ່າຍ ເມື່ອພວກເຂົາຍິງລູກສອນໄປແດ່ ພຸ່ງຫອກໄປແດ່ ກວັດແກວ່ງດາບຟັນກັນແດ່ ຊົນເຫຼົ່ານັ້ນຖືກລູກສອນສຽບເອົາແດ່ ຖືກຫອກແທງເອົາແດ່ ຖືກດາບຕັດຫົວແດ່ ຊົນເຫຼົ່ານັ້ນຈຶ່ງເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກປະການໜຶ່ງ ຍ້ອນກາມເປັນເຫດ ຍ້ອນກາມເປັນຕົ້ນເຫດ ຍ້ອນກາມເປັນເຫດເກີດ ຍ້ອນເຫດແຫ່ງກາມທັງຫຼາຍ ຊົນທັງຫຼາຍຖືດາບແລະໂລ່ ຈັບທະນູພາດລູກສອນແລ້ວແລ່ນເຂົ້າ

ໄປສູ່ຕີນກຳແພງທີ່ສາບດ້ວຍຂີ້ຕົມຮ້ອນ ເມື່ອພວກເຂົາຍິງລູກສອນໄປແດ່ ພຸ່ງຫອກໄປແດ່ ກວັດແກວ່ງດາບຟັນກັນແດ່ ຊົນເຫຼົ່ານັ້ນຖືກລູກສອນສຽບເອົາແດ່ ຖືກຫອກແທງເອົາແດ່ ຖືກຂີ້ງົວຮ້ອນຫົດແດ່ ຖືກຄາດສັບແດ່ ຖືກດາບຕັດຫົວແດ່ ຊົນເຫຼົ່ານັ້ນຈຶ່ງເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່

ພິກຂຸທັງຫຼາຍ ແມ່ນຂໍ້ນີ້ກໍຊື່ວ່າ ເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກປະການໜຶ່ງ ຍ້ອນກາມເປັນເຫດ ຍ້ອນກາມເປັນຕົ້ນເຫດ ຍ້ອນກາມເປັນເຫດເກີດຍ້ອນເຫດແຫ່ງກາມທັງຫຼາຍ ຊົນທັງຫຼາຍເຈາະປ່ອງຈອບລັກແດ່ ລັກໝົດກ້ຽງແດ່ ປຸ້ນເຮືອນແດ່ດັກຈີ້ໃນທາງປຽວແດ່ ລະເມີດພັນລະຍາຜູ້ອື່ນແດ່ ພຣະຣາຊາກໍຮັບສັ່ງໃຫ້ຈັບເຂົາລົງອາຍາດ້ວຍປະການຕ່າງ ໆ ຄື ຂຽນດ້ວຍແສ້ແດ່ ຂຽນດ້ວຍຫວາຍແດ່ ຕີດ້ວຍໄມ້ຄ້ອນແດ່ ໗ລ໗ ເອົາຜ້າພັນຕົວຮົດນ້ຳມັນແລ້ວເອົາໄຟເຜົາແດ່ ພັນມືແລ້ວເອົາໄຟເຜົາຕ່າງຄົບແດ່ ລອກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ ລອກໜັງຕັ້ງແຕ່ຄໍເຖິງແອວເຮັດໃຫ້ແນມເບິ່ງຄືວ່ານຸ່ງຜ້າຄາກອງແດ່ ໃສ່ປອກເຫຼັກທີ່ແຂນສອກແລະເຂົ່າແລ້ວສຽບຫຼາວທັງຫ້າທິດເອົາໄຟເຜົາແດ່ ໃຊ້ເບັດເກາະໜັງຊີ້ນເອັນອອກມາແດ່ ປາດຊີ້ນອອກເປັນແວ່ນໆ ເໝືອນຫຼຽນກະສາບແດ່ ປາດໜັງ ຊີ້ນເອັນອອກເຫຼືອໄວ້ແຕ່ກະດູກແດ່ ໃຊ້ຫຼາວແທງຮູຫູໃຫ້ຊອດເຖິງກັນແດ່ ສຽບໃຫ້ຕິດດິນແລ້ວຈັບເຂົາໝຸນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວລອກໜັງອອກເຫຼືອໄວ້ແຕ່ກອງຊີ້ນເໝືອນຕັ່ງໃບໄມ້ແດ່ ຫົດຕົວດ້ວຍນ້ຳມັນທີ່ກຳລັງຮ້ອນຟົດແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ເອົາດາບຕັດຫົວອອກແດ່[9] ຊົນເຫຼົ່ານັ້ນຈຶ່ງເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກປະການໜຶ່ງ ຍ້ອນກາມເປັນເຫດ ຍ້ອນກາມເປັນຕົ້ນເຫດ ຍ້ອນກາມເປັນເຫດເກີດຍ້ອນເຫດແຫ່ງກາມທັງຫຼາຍ ຊົນທັງຫຼາຍປະພຶດກາຍທຸຈະຣິດ ວະຈີທຸຈະຣິດ ແລະມະໂນທຸຈະຣິດ ເມື່ອປະພຶດກາຍທຸຈະຣິດ ວະຈີທຸຈະຣິດ ມະໂນທຸຈະຣິດແລ້ວ ຫຼັງຈາກຕາຍແລ້ວຍ່ອມໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກໃນສຳປະຣາຍະພົບ ມີກາມເປັນເຫດ ມີກາມເປັນຕົ້ນເຫດ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

## ລັດທິຂອງນິຄົນ

[໑໗໙] ມະຫານາມະ ສະໄໝໜຶ່ງ ເຮົາຢູ່ທີ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ເຂດກາສີລາຂ້າງພູອິຊິຄິລິ ນິຄົນເປັນຈຳນວນຫຼາຍຖືການຢືນເປັນຂໍ້ວັດປະຕິບັດ ປະຕິເສດການນັ່ງ ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພະຍາຍາມ ຄັ້ງນັ້ນ ເຮົາອອກຈາກທີ່ຫຼີກເຣັ້ນໃນເວລາຄ່ຳ ເຂົ້າໄປຫານິຄົນເຫຼົ່ານັ້ນ ຈົນເຖິງເຂດກາສີລາຂ້າງພູອິຊິຄິລິ ແລ້ວໄດ້ກ່າວກັບນິຄົນເຫຼົ່ານັ້ນວ່າ "ນິຄົນທັງຫຼາຍ"

ເປັນຫຍັງນໍ? ທ່ານທັງຫຼາຍຈຶ່ງຖືການຢືນເປັນຂໍ້ວັດປະຕິບັດ ປະຕິເສດການນັ່ງ ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ເຊິ່ງເກີດຈາກຄວາມພະຍາຍາມ" ເມື່ອເຮົາກ່າວແນວນັ້ນແລ້ວ ນິຄົນເຫຼົ່ານັ້ນໄດ້ກ່າວກັບເຮົາວ່າ "ທ່ານຜູ້ມີອາຍຸ ນິຄົນ ນາຕະບຸດເປັນສັບພັນຍູ (ຜູ້ຮູ້ທຸກສິ່ງ) ເຫັນສິ່ງທັງປວງ ປະຕິຍານຍານທັດສະນະ ຢ່າງຄົບຖ້ວນວ່າ "ເມື່ອເຮົາຍ່າງ ຢືນ ນອນ ແລະ ຕື່ນຢູ່ ຍານທັດສະນະໄດ້ຜາກົດຕໍ່ເນື່ອງຕະຫຼອດເວລາ" ນິຄົນ ນາຕະບຸດນັ້ນກ່າວແນວນີ້ວ່າ "ນິຄົນທັງຫຼາຍຜູ້ຈະເລີນ ບາບກຳທີ່ພວກທ່ານເຮັດແລ້ວໃນການກ່ອນມີຢູ່ ພວກທ່ານຈົ່ງກຳຈັດບາບກຳນັ້ນ ດ້ວຍປະຕິປະທາທີ່ເຮັດໄດ້ຍາກອັນເຜັດຮ້ອນນີ້ ຂໍ້ທີ່ທ່ານທັງຫຼາຍ ສັງລວມກາຍ ສັງລວມວາຈາ ສັງລວມໃຈ ໃນການບັດນີ້ນັ້ນ ເປັນການບໍ່ເຮັດບາບກຳຕໍ່ອີກ ຍ້ອນກຳເກົ່າສິ້ນສຸດໄປຍ້ອນຕະບະ (ການພ່ຳເພັງພຽນຢ່າງໜັກ) ຍ້ອນບໍ່ເຮັດກຳໃໝ່ ຈຶ່ງບໍ່ຕົກຢູ່ໃຕ້ອຳນາດ (ແຫ່ງກຳ) ຕໍ່ໄປອີກ ຍ້ອນບໍ່ເປັນໄປຕາມອຳນາດແຫ່ງກຳອີກ ກຳຈຶ່ງໝົດສິ້ນໄປ ຍ້ອນກຳໝົດສິ້ນໄປ ທຸກຈຶ່ງໝົດສິ້ນໄປ ຍ້ອນທຸກໝົດສິ້ນໄປ ເວທະນາຈຶ່ງໝົດສິ້ນໄປ ຍ້ອນເວທະນາໝົດສິ້ນໄປ ທຸກທັງປວງຈຶ່ງຈັກເປັນອັນສະຫຼາຍຫາຍໄປ ຄຳທີ່ນິຄົນ ນາຕະບຸດ ກ່າວແລ້ວນັ້ນຖືກໃຈແລະພໍໃຈເຮົາທັງຫຼາຍ ຍ້ອນເຫດນັ້ນ ພວກເຮົາຈຶ່ງມີໃຈຍິນດີປະພຶດຢູ່ຢ່າງນີ້"

[໑໘໐] ມະຫານາມະ ເມື່ອພວກນິຄົນກ່າວແນວນີ້ແລ້ວ ເຮົາໄດ້ກ່າວກັບນິຄົນ ເຫຼົ່ານັ້ນວ່າ "ນິຄົນທັງຫຼາຍ ພວກທ່ານຮູ້ບໍ່ວ່າ "ແຕ່ກ່ອນ ເຮົາທັງຫຼາຍໄດ້ມີແລ້ວ ບໍ່ແມ່ນບໍ່ໄດ້ມີແລ້ວແດ່ບໍ?"

ພວກນິຄົນຕອບວ່າ "ທ່ານພຣະໂຄດົມ ຂໍ້ນີ້ບໍ່ໄດ້ເປັນແນວນັ້ນ"

ຕະຖາຄົດຖາມວ່າ "ພວກທ່ານຮູ້ບໍ່ວ່າ "ແຕ່ກ່ອນ ເຮົາທັງຫຼາຍໄດ້ເຮັດບາບກຳໄວ້ ບໍ່ແມ່ນບໍ່ໄດ້ເຮັດໄວ້ແດ່ບໍ?"

ພວກນິຄົນຕອບວ່າ "ທ່ານພຣະໂຄດົມ ຂໍ້ນີ້ບໍ່ໄດ້ເປັນແນວນັ້ນ"

ຕະຖາຄົດຖາມວ່າ "ພວກທ່ານຮູ້ບໍ່ວ່າ "ແຕ່ກ່ອນ ເຮົາທັງຫຼາຍໄດ້ເຮັດບາບກຳແນວນີ້ໄວ້ແດ່ບໍ?"

ພວກນິຄົນຕອບວ່າ "ທ່ານພຣະໂຄດົມ ຂໍ້ນີ້ບໍ່ໄດ້ເປັນແນວນັ້ນ"

ຕະຖາຄົດຖາມວ່າ "ພວກທ່ານຮູ້ບໍ່ວ່າ "ແຕ່ກ່ອນ ທຸກທໍ່ນີ້ເຮົາກຳຈັດໄດ້ແລ້ວ ທຸກທໍ່ນີ້ເຮົາຄວນກຳຈັດສາ ຫຼື ເມື່ອເຮົາກຳຈັດທຸກທໍ່ນີ້ໄດ້ແລ້ວ ກໍຈັກເປັນອັນ

ກໍາຈັດທຸກໄດ້ທັງໝົດແດ່ບໍ່?"

ພວກນີຄົນຕອບວ່າ "ທ່ານພຣະໂຄດົມ ຂໍ້ນີ້ບໍ່ໄດ້ເປັນແນວນັ້ນ"

ຕະຖາຄົດຖາມວ່າ "ພວກທ່ານຮູ້ຈັກການລະອະກຸສົນທໍາທັງຫຼາຍ ການພ່ໍາເພັງກຸສົນທໍາທັງຫຼາຍໃນປັດຈຸບັນແດ່ບໍ?"

ພວກນີຄົນຕອບວ່າ "ທ່ານພຣະໂຄດົມ ຂໍ້ນີ້ບໍ່ໄດ້ເປັນແນວນັ້ນ"

ຕະຖາຄົດຖາມວ່າ "ທ່ານນີຄົນທັງຫຼາຍ ໄດ້ຍິນມາວ່າ ພວກທ່ານບໍ່ຮູ້ວ່າ "ແຕ່ກ່ອນ ເຮົາທັງຫຼາຍໄດ້ມີແລ້ວ ບໍ່ແມ່ນບໍ່ໄດ້ມີແລ້ວ" ບໍ່ຮູ້ວ່າ "ແຕ່ກ່ອນ ເຮົາໄດ້ເຮັດບາບກໍາໄວ້ ບໍ່ແມ່ນບໍ່ໄດ້ເຮັດໄວ້" ບໍ່ຮູ້ວ່າ "ເຮົາໄດ້ເຮັດບາບກໍາແນວນີ້ແດ່" ບໍ່ຮູ້ວ່າ "ທຸກທໍ່ນີ້ເຮົາກໍາຈັດໄດ້ແລ້ວ ທຸກທໍ່ນີ້ເຮົາຄວນກໍາຈັດສາ ຫຼື ເມື່ອເຮົາກໍາຈັດທຸກທໍ່ນີ້ໄດ້ແລ້ວ ກໍຈັກເປັນອັນກໍາຈັດທຸກໄດ້ທັງໝົດ" ບໍ່ຮູ້ຈັກການລະອະກຸສົນທໍາທັງຫຼາຍ ການພ່ໍາເພັງກຸສົນທໍາທັງຫຼາຍໃນປັດຈຸບັນ ເມື່ອເປັນເຊັ່ນນີ້ ຜູ້ທີ່ບວດໃນພວກນີຄົນກໍຈະມີແຕ່ສະເພາະພວກຄົນດຸຮ້າຍ ມືມີເປື້ອນເລືອດ ເຮັດກໍາຊົ່ວຊ້າ ກັບມາເກີດໃນໝູ່ມະນຸດໃນໂລກ"

## ບຸກຄົນຜູ້ຢູ່ເປັນສຸກ

ພວກນີຄົນຕອບວ່າ "ທ່ານພຣະໂຄດົມ ບຸກຄົນບໍ່ແມ່ນຈະເພິ່ງປະສົບຄວາມສຸກໄດ້ ດ້ວຍຄວາມສຸກ ແຕ່ຈະເພິ່ງປະສົບຄວາມສຸກໄດ້ດ້ວຍຄວາມທຸກ ຖ້າບຸກຄົນຈັກປະສົບຄວາມສຸກໄດ້ດ້ວຍຄວາມສຸກ ພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດກໍຄົງຈະປະສົບຄວາມສຸກ ຍ້ອນພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດຈະຢູ່ເປັນສຸກກວ່າທ່ານພຣະໂຄດົມ"

ຕະຖາຄົດຖາມວ່າ "ນີຄົນທັງຫຼາຍກ່າວອາຈາຣີບຟ້າວບໍ່ທັນພິຈາລະນາໃຫ້ຮອບຂອບກ່ອນວ່າ "ບຸກຄົນບໍ່ແມ່ນຈະເພິ່ງປະສົບຄວາມສຸກໄດ້ດ້ວຍຄວາມສຸກ ແຕ່ຈະເພິ່ງປະສົບຄວາມສຸກໄດ້ດ້ວຍຄວາມທຸກ ຖ້າບຸກຄົນຈັກປະສົບຄວາມສຸກໄດ້ດ້ວຍຄວາມສຸກ ພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດກໍຄົງຈະປະສົບຄວາມສຸກ ຍ້ອນພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດຈະຢູ່ເປັນສຸກຍິ່ງກວ່າທ່ານພຣະໂຄດົມ" ແຕ່ວ່າ ເຮົາທໍ່ນັ້ນ ທີ່ພວກທ່ານຄວນຊັກຖາມໃນໃຈຄວາມນັ້ນວ່າ "ໃນບັນດາທ່ານທັງ ໔ ນີ້ ໃຜນໍ? ຢູ່ເປັນສຸກຫຼາຍກວ່າກັນ ພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດ ຫຼື ທ່ານພຣະໂຄດົມ"

ພວກນີຄົນຕອບວ່າ "ພວກຂ້າພະເຈົ້າກ່າວອາຈາຣີບຟ້າວບໍ່ທັນພິຈາລະນາໃຫ້ຮອບຂອບກ່ອນວ່າ "ບຸກຄົນບໍ່ແມ່ນຈະເພິ່ງປະສົບຄວາມສຸກໄດ້ດ້ວຍຄວາມສຸກ ແຕ່ຈະເພິ່ງປະສົບຄວາມສຸກໄດ້ດ້ວຍຄວາມທຸກ ຖ້າບຸກຄົນຈັກປະສົບຄວາມສຸກໄດ້ດ້ວຍຄວາມສຸກ ພຣະເຈົ້າພິມພິສານ ຈອມທັບແຄວ້ນມະຄົດກໍຄົງຈະປະສົບຄວາມສຸກ ຍ້ອນພຣະເຈົ້າພິມພິສານຈອມທັບແຄວ້ນ ມະຄົດຈະ

ຢູ່ເປັນສຸກກວ່າທ່ານພຣະໂຄດົມ" ຂໍໂອກາດຢຸດເລື້ອງນີ້ໄວ້ພຽງທີ່ນີ້ ແມ່ນບັດນີ້ ພວກຂ້າພະເຈົ້າຈະຖາມທ່ານພຣະໂຄດົມແດ່ວ່າ "ໃນບັນດາທ່ານທັງ ໒ ໃຜນໍ? ຢູ່ເປັນສຸກຫຼາຍກວ່າກັນ ພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດ ຫຼື ທ່ານພຣະໂຄດົມ"

ຕະຖາຄົດຖາມວ່າ "ຖ້າເປັນແນວນັ້ນ ໃນໃຈຄວາມຂໍ້ນັ້ນ ເຮົາຈັກຖາມພວກທ່ານກັບວ່າ "ພວກທ່ານເຂົ້າໃຈແນວໃດ? ໃຫ້ຕອບຢ່າງນັ້ນ ພວກທ່ານເຂົ້າໃຈຄວາມຂໍ້ນີ້ວ່າຢ່າງໃດ? ພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດບໍ່ຊົງເຄື່ອນໄຫວພຣະວໍຣະກາຍ ບໍ່ມີພຣະດຳຣັດ ຈັກສາມາດສະເຫວີຍສຸກໂດຍສ່ວນດຽວຢູ່ຕະຫຼອດ ໗ ຄືນ ໗ ມື້ໄດ້ບໍ?"

ພວກນີຄົນຕອບວ່າ "ທ່ານພຣະໂຄດົມ ຂໍ້ນີ້ບໍ່ໄດ້ເປັນແນວນັ້ນ"

ຕະຖາຄົດຖາມວ່າ "ພວກທ່ານເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ? ພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດບໍ່ຊົງເຄື່ອນໄຫວພຣະວໍຣະກາຍ ບໍ່ມີພຣະດຳຣັດ ຈັກສາມາດສະເຫວີຍສຸກໂດຍສ່ວນດຽວຢູ່ຕະຫຼອດ ໖ ຄືນ ໖ ມື້ ຯລຯ ໕ ຄືນ ໕ ມື້ ຯລຯ ໔ ຄືນ ໔ ມື້ ຯລຯ ໓ ຄືນ ໓ ມື້ ຯລຯ ໒ ຄືນ ໒ ມື້ ພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດບໍ່ຊົງເຄື່ອນໄຫວພຣະວໍຣະກາຍ ບໍ່ມີພຣະດຳຣັດ ຈັກສາມາດສະເຫວີຍສຸກໂດຍສ່ວນດຽວຢູ່ຕະຫຼອດ ໑ ຄືນ ໑ ມື້ໄດ້ແດ່ບໍ?"

ພວກນີຄົນຕອບວ່າ "ທ່ານພຣະໂຄດົມ ຂໍ້ນີ້ບໍ່ໄດ້ເປັນແນວນັ້ນ"

ຕະຖາຄົດຖາມວ່າ "ເຮົາບໍ່ເຄື່ອນໄຫວກາຍ ບໍ່ເວົ້າ ສາມາດສະເຫວີຍສຸກໂດຍສ່ວນດຽວຢູ່ຕະຫຼອດ ໑ ຄືນ ໑ ມື້ ຯລຯ ໒ ຄືນ ໒ ມື້ ຯລຯ ໓ ຄືນ ໓ ມື້ ຯລຯ ໔ ຄືນ ໔ ມື້ ຯລຯ ໕ ຄືນ ໕ ມື້ ຯລຯ ໖ ຄືນ ໖ ມື້ ເຮົາບໍ່ເຄື່ອນໄຫວກາຍ ບໍ່ເວົ້າ ສາມາດສະເຫວີຍສຸກໂດຍສ່ວນດຽວຢູ່ຕະຫຼອດ ໗ ຄືນ ໗ ມື້ ພວກທ່ານເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ ເມື່ອເປັນແນວນີ້ ໃຜນໍຈະຢູ່ເປັນສຸກກວ່າກັນ ພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດ ຫຼື ເຮົາຕະຖາຄົດ?"

ພວກນີຄົນຕອບວ່າ "ເມື່ອເປັນແນວນີ້ ທ່ານພຣະໂຄດົມທີ່ນັ້ນ ຢູ່ເປັນສຸກກວ່າພຣະເຈົ້າພິມພິສານຈອມທັບແຄວ້ນມະຄົດ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ເຈົ້າສາກະຍະພຣະນາມວ່າ ມະຫານາມະຊົງມີໃຈຍິນດີ ຊົມຊື່ນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະທຸກຂັກຂັນທະສູດທີ ໔ ຈົບ**

# ໕. ອະນຸມານສູດ

## ວ່າດ້ວຍການປຽບຕົນກັບຜູ້ອື່ນ

## ທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

[໑໘໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະມະຫາໂມກຄັນລານະ ອາໄສຢູ່ເພສະກະລາວັນ ສະຖານທີ່ໃຫ້ອະໄພແກ່ໝູ່ເນື້ອ ເຂດນະຄອນສຸງສຸມາຣະຄິຣະ ໃນແຄວ້ນພັກຄະ ໃນທີ່ນັ້ນ ທ່ານພຣະມະຫາໂມກຄັນລານະ ໄດ້ຮຽກພິກຂຸທັງຫຼາຍດ້ວຍຄຳວ່າ "ທ່ານຜູ້ມີອາຍຸທັງຫຼາຍ" ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະມະຫາໂມກຄັນລານະຈຶ່ງໄດ້ກ່າວເລື້ອງນີ້ ວ່າ

"ທ່ານຜູ້ມີອາຍຸທັງຫຼາຍ ຖ້າພິກຂຸປະວາຣະນາວ່າ "ຂໍທ່ານຈົ່ງວ່າກ່າວຂ້າພະເຈົ້າ ຂ້າພະເຈົ້າເປັນຜູ້ທີ່ທ່ານຄວນວ່າກ່າວໄດ້" ແຕ່ພິກຂຸນັ້ນເປັນຜູ້ວ່າຍາກ ມີທຳທີ່ເຮັດໃຫ້ເປັນຜູ້ ວ່າຍາກ ບໍ່ອົດທົນ ບໍ່ຍອມຮັບຄຳສັ່ງສອນໂດຍເຄົາລົບ ເມື່ອເປັນເຊັ່ນນັ້ນ ເພື່ອນພົມມະຈາຣີທັງຫຼາຍຍ່ອມເຂົ້າໃຈພິກຂຸນັ້ນວ່າ ເປັນຜູ້ບໍ່ຄວນວ່າກ່າວ ບໍ່ຄວນບອກສອນ ແລະ ບໍ່ຄວນໄວ້ວາງໃຈ

ທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີຄວາມປາຖະໜາທີ່ເປັນບາບ ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາທີ່ເປັນບາບ ແມ່ນຂໍ້ທີ່ພິກຂຸເປັນຜູ້ມີຄວາມປາຖະໜາທີ່ເປັນບາບ ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາທີ່ເປັນບາບນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໒. ເປັນຜູ້ຍົກຕົນ ຂົ່ມຜູ້ອື່ນ ແມ່ນຂໍ້ທີ່ພິກຂຸເປັນຜູ້ຍົກຕົນ ຂົ່ມຜູ້ອື່ນນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໓. ເປັນຜູ້ມັກໂກດ ມັກຖືກຄວາມໂກດຄອບງຳ ແມ່ນຂໍ້ທີ່ພິກຂຸເປັນຜູ້ມັກໂກດ ມັກຖືກຄວາມໂກດຄອບງຳນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໔. ເປັນຜູ້ມັກໂກດ ມັດໂກດຍ້ອນຄວາມໂກດເປັນເຫດ ແມ່ນຂໍ້ທີ່ພິກຂຸເປັນຜູ້ມັກໂກດ ມັດໂກດຍ້ອນຄວາມໂກດເປັນເຫດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໕. ເປັນຜູ້ມັກໂກດ ມີຄວາມຣະແວງໂພດຍ້ອນຄວາມໂກດເປັນເຫດ ແມ່ນຂໍ້ທີ່ພິກຂຸເປັນຜູ້ມັກໂກດຣະແວງໂພດຍ້ອນຄວາມໂກດເປັນເຫດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໖. ເປັນຜູ້ມັກໂກດ ເປ່ງວາຈາໃກ້ຄວາມໂກດ ແມ່ນຂໍ້ທີ່ພິກຂຸເປັນຜູ້ມັກໂກດ ເປ່ງວາຈາໃກ້ຄວາມໂກດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໗. ຖືກໂຈດແລ້ວກັບໂຕ້ຖຽງຜູ້ໂຈດ ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວກັບໂຕ້ຖຽງຜູ້ໂຈດນີ້ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໘. ຖືກໂຈດແລ້ວກັບຣຸກຮານໂຈດ ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວກັບຣຸກຮານໂຈດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໙. ຖືກໂຈດແລ້ວກັບປັກປຳໃສ່ຄວາມໂຈດ ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວກັບປັກປຳໃສ່ຄວາມໂຈດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໑໐. ຖືກໂຈດແລ້ວກັບເວົ້າປົກປິດ ເວົ້ານອກເລື້ອງ ສະແດງຄວາມຄຽດ ຄວາມປະສົງຮ້າຍ ແລະຄວາມບໍ່ເຊື່ອຟັງໃຫ້ຜາກົດ ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວກັບເວົ້າປົກປິດ ເວົ້ານອກເລື້ອງ ສະແດງຄວາມຄຽດ ຄວາມປະສົງຮ້າຍ ແລະຄວາມບໍ່ເຊື່ອຟັງໃຫ້ຜາກົດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໑໑. ຖືກໂຈດແລ້ວບໍ່ຍອມອະທິບາຍພຶດຕິກຳ (ຂອງຕົນ) ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວບໍ່ຍອມອະທິບາຍພຶດຕິກຳ (ຂອງຕົນ) ນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໑໒. ເປັນຜູ້ລົບຫຼູ່ຄຸນທ່ານ ຕີສະເໝີ ແມ່ນຂໍ້ທີ່ພິກຂຸເປັນຜູ້ລົບຫຼູ່ຄຸນທ່ານ ຕີສະເໝີນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໑໓. ເປັນຜູ້ຣິດສະຫຍາ ຂີ້ຖີ່ ແມ່ນຂໍ້ທີ່ພິກຂຸເປັນຜູ້ຣິດສະຫຍາ ຂີ້ຖີ່ນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໑໔. ເປັນຜູ້ໂອ້ອວດ ມີມານຍາ ແມ່ນຂໍ້ທີ່ພິກຂຸເປັນຜູ້ໂອ້ອວດ ມີມານຍານີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໑໕. ເປັນຜູ້ກະດ້າງ ມັກດູໝິ່ນຜູ້ອື່ນ ແມ່ນຂໍ້ທີ່ພິກຂຸເປັນຜູ້ກະດ້າງ ມັກດູໝິ່ນຜູ້ອື່ນນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

໑໖. ເປັນຜູ້ຖືຄວາມເຫັນຂອງຕົນເປັນໃຫຍ່ ຖືດື້ ກຳຈັດໄດ້ຍາກ ແມ່ນຂໍ້ທີ່ພິກຂຸເປັນຜູ້ຖືຄວາມເຫັນຂອງຕົນເປັນໃຫຍ່ ຖືດື້ ກຳຈັດໄດ້ຍາກນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

ທຳເຫຼົ່ານີ້ຮຽກວ່າ ທຳທີ່ເຮັດໃຫ້ເປັນຜູ້ວ່າຍາກ

## ທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

[໑໘໔] ທ່ານຜູ້ມີອາຍຸທັງຫຼາຍ ຖ້າພິກຂຸບໍ່ປະວາຣະນາໄວ້ວ່າ "ຂໍທ່ານຈົ່ງວ່າກ່າວ ຂ້າພະເຈົ້າ ຂ້າພະເຈົ້າເປັນຜູ້ທີ່ທ່ານຄວນວ່າກ່າວໄດ້" ແຕ່ພິກຂຸນັ້ນ ເປັນຜູ້ວ່າງ່າຍ ມີທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ ເປັນຜູ້ອົດທົນ ຍອມຮັບຄຳສັ່ງສອນໂດຍເຄົາລົບ ເມື່ອເປັນແນວນີ້ ເພື່ອນພົມມະຈາຣີທັງຫຼາຍຍ່ອມເຂົ້າໃຈພິກຂຸນັ້ນວ່າ ເປັນຜູ້ຄວນວ່າກ່າວ ຄວນສັ່ງສອນ ແລະ ຄວນໄວ້ວາງໃຈ

ທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ມີຄວາມປາຖະໜາທີ່ເປັນບາບ ບໍ່ຕົກຢູ່ໃນອຳນາດແຫ່ງຄວາມ ປາຖະໜາທີ່ເປັນບາບ ແມ່ນຂໍ້ທີ່ພິກຂຸເປັນຜູ້ບໍ່ມີຄວາມປາຖະໜາທີ່ເປັນບາບ ບໍ່ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາທີ່ເປັນບາບນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໒. ເປັນຜູ້ບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ແມ່ນຂໍ້ທີ່ພິກຂຸເປັນຜູ້ບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໓. ເປັນຜູ້ບໍ່ມັກໂກດ ບໍ່ຖືກຄວາມໂກດຄອບງຳ ແມ່ນຂໍ້ທີ່ພິກຂຸເປັນຜູ້ບໍ່ມັກໂກດ ບໍ່ຖືກຄວາມໂກດຄອບງຳນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໔. ເປັນຜູ້ບໍ່ມັກໂກດ ບໍ່ມັດໂກດຍ້ອນຄວາມໂກດເປັນເຫດ ແມ່ນຂໍ້ທີ່ ພິກຂຸເປັນຜູ້ບໍ່ມັກໂກດ ບໍ່ມັດໂກດຍ້ອນຄວາມໂກດເປັນເຫດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໕. ເປັນຜູ້ບໍ່ມັກໂກດ ບໍ່ຣະແວງໂພດຍ້ອນຄວາມໂກດເປັນເຫດ ແມ່ນຂໍ້ທີ່ ພິກຂຸເປັນຜູ້ບໍ່ມັກໂກດ ບໍ່ຣະແວງໂພດຍ້ອນຄວາມໂກດເປັນເຫດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໖. ເປັນຜູ້ບໍ່ມັກໂກດ ບໍ່ເປ່ງວາຈາໃກ້ຄວາມໂກດ ແມ່ນຂໍ້ທີ່ພິກຂຸເປັນຜູ້ບໍ່ມັກໂກດ ບໍ່ເປ່ງວາຈາໃກ້ຄວາມໂກດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໗. ຖືກໂຈດແລ້ວບໍ່ໂຕ້ຖຽງໂຈດ ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວບໍ່ໂຕ້ຖຽງໂຈດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໘. ຖືກໂຈດແລ້ວບໍ່ຮຸກຮານໂຈດ ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວບໍ່ຮຸກຮານໂຈດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໙. ຖືກໂຈດແລ້ວບໍ່ປັກປຳໂຈດ ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວບໍ່ປັກປຳໂຈດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໑໐. ຖືກໂຈດແລ້ວບໍ່ເວົ້າປົກປິດ ບໍ່ເວົ້ານອກເລື້ອງ ບໍ່ສະແດງຄວາມຄຽດ ຄວາມປະສົງຮ້າຍ ແລະ ຄວາມບໍ່ເຊື່ອຟັງໃຫ້ຜາກົດ ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວບໍ່ເວົ້າປົກປິດ ບໍ່ເວົ້ານອກເລື້ອງ ບໍ່ສະແດງຄວາມຄຽດ ຄວາມປະສົງຮ້າຍແລະຄວາມບໍ່ເຊື່ອຟັງໃຫ້ຜາກົດນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໑໑. ຖືກໂຈດແລ້ວຍອມອະທິບາຍພຶດຕິກຳ (ຂອງຕົນ) ແມ່ນຂໍ້ທີ່ພິກຂຸຖືກໂຈດແລ້ວຍອມອະທິບາຍພຶດຕິກຳ (ຂອງຕົນ) ນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໑໒. ເປັນຜູ້ບໍ່ລົບຫຼູ່ຄຸນທ່ານ ບໍ່ຕີສະເໝີ ແມ່ນຂໍ້ທີ່ພິກຂຸເປັນຜູ້ບໍ່ລົບຫຼູ່ຄຸນທ່ານ ບໍ່ຕີສະເໝີນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໑໓. ເປັນຜູ້ບໍ່ຣິດສະຫຍາ ບໍ່ຂີ້ຖີ່ ແມ່ນຂໍ້ທີ່ພິກຂຸເປັນຜູ້ບໍ່ຣິດສະຫຍາ ບໍ່ຂີ້ຖີ່ນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໑໔. ເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍາ ແມ່ນຂໍ້ທີ່ພິກຂຸເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍານີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໑໕. ເປັນຜູ້ບໍ່ກະດ້າງ ບໍ່ດູໝິ່ນຜູ້ອື່ນ ແມ່ນຂໍ້ທີ່ພິກຂຸເປັນຜູ້ບໍ່ກະດ້າງ ບໍ່ດູໝິ່ນຜູ້ອື່ນນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

໑໖. ເປັນຜູ້ບໍ່ຖືຄວາມເຫັນຂອງຕົນເປັນໃຫຍ່ ບໍ່ຖືດື້ ກຳຈັດໄດ້ງ່າຍ ແມ່ນຂໍ້ທີ່ພິກຂຸເປັນຜູ້ບໍ່ຖືຄວາມເຫັນຂອງຕົນເປັນໃຫຍ່ ບໍ່ຖືດື້ ກຳຈັດໄດ້ງ່າຍນີ້ ກໍເປັນທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

ທຳເຫຼົ່ານີ້ຮຽກວ່າ ທຳທີ່ເຮັດໃຫ້ເປັນຜູ້ວ່າງ່າຍ

## ການອະນຸມານຕົນເອງ

[໑໗໓] ທ່ານຜູ້ມີອາຍຸທັງຫຼາຍ ໃນທຳ ໑໖ ປະການນັ້ນ ພິກຂຸຄວນອະນຸມານ

ຕົນເອງ໑ ແນວນີ້ວ່າ "ບຸກຄົນຜູ້ມີຄວາມປາຖະໜາທີ່ເປັນບາບ ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາທີ່ເປັນບາບ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງມີຄວາມປາຖະໜາທີ່ເປັນບາບ ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາທີ່ເປັນບາບ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກບໍ່ເປັນຜູ້ມີຄວາມປາຖະໜາທີ່ເປັນບາບ ບໍ່ຕົກຢູ່ໃນອຳນາດແຫ່ງຄວາມປາຖະໜາທີ່ເປັນບາບ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ຍົກຕົນຂົ່ມຜູ້ອື່ນ ຍ່ອມບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງເປັນຜູ້ຍົກຕົນຂົ່ມຜູ້ອື່ນ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກບໍ່ຍົກຕົນ ຈັກບໍ່ຂົ່ມຜູ້ອື່ນ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ມັກໂກດ ຖືກຄວາມໂກດຄອບງຳຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງເປັນຜູ້ມັກໂກດ ຖືກຄວາມໂກດຄອບງຳເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກບໍ່ເປັນຜູ້ມັກໂກດ ບໍ່ຖືກຄວາມໂກດຄອບງຳ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ມັກໂກດ ມັດໂກດ ຍ້ອນຄວາມໂກດເປັນເຫດ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງເປັນຜູ້ມັກໂກດ ມັດໂກດຍ້ອນຄວາມໂກດເປັນເຫດ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກບໍ່ເປັນຜູ້ມັກໂກດ ບໍ່ມັດໂກດ ຍ້ອນຄວາມໂກດເປັນເຫດ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ມັກໂກດ ຣະແວງໂພດຍ້ອນຄວາມໂກດເປັນເຫດ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງເປັນຜູ້ມັກໂກດ ຣະແວງໂພດຍ້ອນຄວາມໂກດເປັນເຫດ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກບໍ່ເປັນຜູ້ມັກໂກດ ບໍ່ຣະແວງໂພດຍ້ອນຄວາມໂກດ ເປັນເຫດ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ມັກໂກດ ເປ່ງວາຈາໃກ້ຄວາມໂກດຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງເປັນຜູ້ມັກໂກດ ເປ່ງວາຈາໃກ້ຄວາມໂກດ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກບໍ່ເປັນຜູ້ມັກໂກດ ບໍ່ເປ່ງວາຈາໃກ້ຄວາມໂກດ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ຖືກໂຈດແລ້ວກັບໂຕ້ຖຽງໂຈດ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງຖືກໂຈດແລ້ວກັບໂຕ້ຖຽງໂຈດ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຖືກໂຈດແລ້ວຈັກບໍ່ໂຕ້ຖຽງໂຈດ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ຖືກໂຈດແລ້ວກັບຮຸກຮານໂຈດ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຖືກໂຈດແລ້ວກັບຮຸກຮານໂຈດ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຖືກໂຈດແລ້ວຈັກບໍ່ຮຸກຮານໂຈດ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ຖືກໂຈດແລ້ວກັບປັກປຳໂຈດ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງຖືກໂຈດແລ້ວກັບປັກປຳໂຈດ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ

"ເຮົາຖືກໂຈດແລ້ວຈັກບໍ່ປັກປຳໂຈດ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ຖືກໂຈດແລ້ວກັບເວົ້າປົກປິດ ເວົ້ານອກເລື້ອງ ສະແດງຄວາມຄຽດ ຄວາມປະສົງຮ້າຍ ແລະ ຄວາມບໍ່ເຊື່ອຟັງໃຫ້ຜາກົດ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຖືກໂຈດແລ້ວກັບເວົ້າປົກປິດ ເວົ້ານອກເລື້ອງ ສະແດງຄວາມຄຽດ ຄວາມປະສົງຮ້າຍ ແລະ ຄວາມບໍ່ເຊື່ອຟັງໃຫ້ຜາກົດ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຖືກໂຈດແລ້ວຈັກບໍ່ເວົ້າປົກປິດ ບໍ່ເວົ້ານອກເລື້ອງ ບໍ່ສະແດງຄວາມຄຽດ ຄວາມປະສົງຮ້າຍ ແລະຄວາມບໍ່ເຊື່ອຟັງໃຫ້ຜາກົດ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ຖືກໂຈດແລ້ວບໍ່ຍອມອະທິບາຍພຶດຕິກຳ (ຂອງຕົນ) ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງຖືກໂຈດແລ້ວບໍ່ຍອມອະທິບາຍພຶດຕິກຳ (ຂອງຕົນ) ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸ ເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຖືກໂຈດແລ້ວຈັກຍອມອະທິບາຍພຶດຕິກຳ (ຂອງຕົນ)"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ລົບຫຼູ່ຄຸນທ່ານ ຕີສະເໝີ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງເປັນຜູ້ລົບຫຼູ່ຄຸນທ່ານ ຕີສະເໝີ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກບໍ່ເປັນຜູ້ລົບຫຼູ່ຄຸນທ່ານບໍ່ຕີສະເໝີ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ຣິດສະຫຍາ ຂີ້ຖີ່ ຍ່ອມບໍ່ເປັນທີ່ຮັກ ບໍ່

ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງເປັນຜູ້ຣິດສະຫຍາ ຂີ້ຖີ່ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກບໍ່ຣິດສະຫຍາ ບໍ່ຂີ້ຖີ່"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ໂອ້ອວດ ມີມານຍາ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງເປັນຜູ້ໂອ້ອວດ ມີມານຍາ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍາ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ກະດ້າງ ດູໝິ່ນຜູ້ອື່ນ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງເປັນຜູ້ກະດ້າງ ດູໝິ່ນຜູ້ອື່ນ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກເປັນຜູ້ບໍ່ກະດ້າງ ບໍ່ດູໝິ່ນຜູ້ອື່ນ"

ພິກຂຸຄວນອະນຸມານຕົນເອງແນວນີ້ວ່າ "ບຸກຄົນຜູ້ຖືຄວາມເຫັນຂອງຕົນເປັນໃຫຍ່ ຖືດື້ ກໍາຈັດໄດ້ຍາກ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຖ້າເຮົາຈະເພິ່ງຖືຄວາມເຫັນຂອງຕົນເປັນໃຫຍ່ ຖືດື້ ກໍາຈັດໄດ້ຍາກ ເຮົາກໍຄົງບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນເຫຼົ່າອື່ນ" ພິກຂຸເມື່ອຮູ້ຢ່າງນີ້ຄວນຄິດວ່າ "ເຮົາຈັກບໍ່ຖືຄວາມເຫັນຂອງຕົນເປັນໃຫຍ່ ບໍ່ຖືດື້ ຈັກເປັນຜູ້ກໍາຈັດໄດ້ງ່າຍ"

## ການພິຈາລະນາຕົນເອງ

[໑໘໔] ທ່ານຜູ້ມີອາຍຸທັງຫຼາຍ ໃນທໍາ ໑໖ ປະການນັ້ນ ພິກຂຸຄວນພິຈາລະນາ ຕົນເອງແນວນີ້ວ່າ "ເຮົາເປັນຜູ້ມີຄວາມປາຖະໜາທີ່ເປັນບາບ ຕົກຢູ່ໃນອໍານາດແຫ່ງຄວາມປາຖະໜາທີ່ເປັນບາບແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ມີຄວາມປາຖະໜາທີ່ເປັນບາບ ຕົກຢູ່ໃນອໍານາດແຫ່ງຄວາມປາຖະໜາທີ່ເປັນບາບຈິງ" ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທໍາເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາບໍ່ແມ່ນຜູ້ມີຄວາມປາຖະໜາທີ່ເປັນບາບ ບໍ່ແມ່ນຜູ້ຕົກຢູ່ໃນອໍານາດແຫ່ງຄວາມປາຖະໜາທີ່ເປັນບາບ" ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທໍາທັງຫຼາຍທັງກາງເວັນກາງຄືນ ເພິ່ງຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາເປັນຜູ້ຍົກຕົນຂົ່ມຜູ້ອື່ນແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ຍົກຕົນຂົ່ມຜູ້ອື່ນແທ້" ພິກຂຸນັ້ນຄວນພະຍາຍາມເພື່ອລະບາບອະກຸສົນທໍາເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ບໍ່ຍົກຕົນບໍ່ຂົ່ມຜູ້ອື່ນເລີຍ" ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທໍາທັງຫຼາຍ ທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາເປັນຜູ້ມັກໂກດ ຖືກຄວາມໂກດຄອບງໍາແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ມັກໂກດ ຖືກຄວາມໂກດ

ຄອບງຳແທ້” ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາເປັນຜູ້ບໍ່ມັກໂກດ ບໍ່ຖືກຄວາມໂກດຄອບງຳ” ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ “ເຮົາເປັນຜູ້ມັກໂກດ ມັດໂກດຍ້ອນຄວາມໂກດເປັນເຫດແມ່ນບໍ?” ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາເປັນຜູ້ມັກໂກດ ມັດໂກດຍ້ອນຄວາມໂກດເປັນເຫດຈິງ” ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາເປັນຜູ້ບໍ່ມັກໂກດ ບໍ່ມັດໂກດຍ້ອນຄວາມໂກດເປັນເຫດ” ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ “ເຮົາເປັນຜູ້ມັກໂກດ ຣະແວງໂພດຍ້ອນຄວາມໂກດເປັນເຫດແມ່ນບໍ?” ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາເປັນຜູ້ມັກໂກດ ຣະແວງໂພດຍ້ອນຄວາມໂກດເປັນເຫດແທ້” ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາເປັນຜູ້ບໍ່ມັກໂກດ ບໍ່ຣະແວງໂພດຍ້ອນຄວາມໂກດເປັນເຫດ” ພິກຂຸນັ້ນຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ “ເຮົາເປັນຜູ້ມັກໂກດ ເປ່ງວາຈາໃກ້ຄວາມໂກດແມ່ນບໍ?” ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາເປັນຜູ້ມັກໂກດ ເປ່ງວາຈາໃກ້ຄວາມໂກດແທ້” ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານີ້ເສຍ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາເປັນຜູ້ບໍ່ມັກໂກດ ບໍ່ເປ່ງວາຈາໃກ້ຄວາມໂກດ” ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ “ເຮົາຖືກໂຈດແລ້ວ ກັບໂຕ້ຖຽງໂຈດແມ່ນບໍ?” ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາຖືກໂຈດແລ້ວກັບໂຕ້ຖຽງໂຈດແທ້” ພິກຂຸນັ້ນຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາຖືກໂຈດແລ້ວບໍ່ໂຕ້ຖຽງໂຈດ” ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ “ເຮົາຖືກໂຈດແລ້ວກັບຮຸກຮານໂຈດແມ່ນບໍ?” ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາຖືກໂຈດແລ້ວກັບຮຸກຮານໂຈດແທ້” ພິກຂຸນັ້ນຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ “ເຮົາຖືກໂຈດແລ້ວບໍ່ຮຸກຮານໂຈດ” ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນ

ກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາຖືກໂຈດແລ້ວກັບປັກປຳໂຈດແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາຖືກໂຈດແລ້ວກັບປັກປຳໂຈດແທ້" ພິກຂຸນັ້ນຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າ ພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາຖືກໂຈດແລ້ວບໍ່ປັກປຳໂຈດ" ພິກຂຸນັ້ນຜູ້ສຶກສາຢ່າງ ຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາຖືກໂຈດແລ້ວກັບເວົ້າປົກປິດ ເວົ້ານອກເລື້ອງ ສະແດງຄວາມຄຽດ ຄວາມປະສົງຮ້າຍ ແລະຄວາມບໍ່ເຊື່ອຟັງ ໃຫ້ຜາກົດແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາຖືກໂຈດແລ້ວກັບເວົ້າປົກປິດ ເວົ້ານອກເລື້ອງສະແດງຄວາມຄຽດ ຄວາມປະສົງຮ້າຍ ແລະ ຄວາມບໍ່ເຊື່ອຟັງໃຫ້ຜາກົດຈິງ" ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາຖືກໂຈດແລ້ວບໍ່ເວົ້າປົກປິດ ບໍ່ເວົ້ານອກເລື້ອງ ບໍ່ສະແດງຄວາມຄຽດ ຄວາມປະສົງຮ້າຍ ແລະຄວາມບໍ່ເຊື່ອຟັງໃຫ້ຜາກົດ" ພິກຂຸນັ້ນຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາຖືກໂຈດແລ້ວ ບໍ່ຍອມອະທິບາຍພຶດຕິກຳ (ຂອງຕົນ) ແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາຖືກໂຈດແລ້ວບໍ່ຍອມອະທິບາຍພຶດຕິກຳ (ຂອງຕົນ) ແທ້" ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາຖືກໂຈດແລ້ວຍອມອະທິບາຍພຶດຕິກຳ (ຂອງຕົນ)" ພິກຂຸນັ້ນຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາເປັນຜູ້ລົບຫຼູ່ຄຸນທ່ານ ຕີສະເໝີທ່ານແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ລົບຫຼູ່ຄຸນທ່ານ ຕີສະເໝີທ່ານແທ້" ພິກຂຸນັ້ນຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ບໍ່ລົບຫຼູ່ຄຸນທ່ານ ບໍ່ຕີສະເໝີ" ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາເປັນຜູ້ຣິດສະຫຍາ ຂີ້ຖີ່ແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ຣິດສະຫຍາຂີ້ຖີ່ແທ້" ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນ ຜູ້ບໍ່ຣິດສະຫຍາ ບໍ່ຂີ້ຖີ່" ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່

ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາເປັນຜູ້ໂອ້ອວດ ມີມານຍາແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ໂອ້ອວດ ມີມານຍາຈິງ" ພິກຂຸນັ້ນຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍາ" ພິກຂຸນັ້ນຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາເປັນຜູ້ແຂງກະດ້າງດູໝິ່ນຜູ້ອື່ນແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ແຂງກະດ້າງ ດູໝິ່ນຜູ້ອື່ນແທ້" ພິກຂຸນັ້ນຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ບໍ່ແຂງກະດ້າງ ບໍ່ດູໝິ່ນຜູ້ອື່ນ" ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳ ທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ອີກປະການໜຶ່ງ ພິກຂຸຄວນພິຈາລະນາຕົນເອງແນວນີ້ວ່າ "ເຮົາເປັນຜູ້ຖືຄວາມເຫັນ ຂອງຕົນເປັນໃຫຍ່ ຖືດື້ ກຳຈັດໄດ້ຍາກແມ່ນບໍ?" ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ຖືຄວາມເຫັນຂອງຕົນເປັນໃຫຍ່ ຖືດື້ ກຳຈັດໄດ້ຍາກແທ້" ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນສາ ແຕ່ຖ້າພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ບໍ່ຖືຄວາມເຫັນຂອງຕົນເປັນໃຫຍ່ ບໍ່ຖືດື້ ກຳຈັດໄດ້ງ່າຍ" ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ຖ້າພິກຂຸພິຈາລະນາຢູ່ ເຫັນແຈ້ງບາບອະກຸສົນທຳເຫຼົ່ານັ້ນທັງໝົດທີ່ຍັງລະບໍ່ໄດ້ໃນຕົນ ພິກຂຸນັ້ນ ຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນທັງໝົດເສຍ ແຕ່ຖ້າພິຈາລະນາຢູ່ບໍ່ເຫັນແຈ້ງບາບອະກຸສົນທຳເຫຼົ່ານັ້ນທັງໝົດ ເຊິ່ງລະໄດ້ແລ້ວໃນຕົນ ພິກຂຸນັ້ນຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ

ທ່ານຜູ້ມີອາຍຸທັງຫຼາຍ ປຽບເໝືອນ ສະຕີ ຫຼື ບຸຣຸດ ໜຸ່ມ ສາວຜູ້ມັກແຕ່ງຕົວ ເມື່ອແຍງເບິ່ງໃບໜ້າຂອງຕົນໃນແກ້ວເງົາ ຫຼື ໃນພາຊະນະນ້ຳໃສສະອາດບໍລິສຸດ ຖ້າພົບເຫັນໄຝຫຼືຝ້າຢູ່ໃບໜ້າຂອງຕົນ ຍ່ອມພະຍາຍາມທີ່ຈະກຳຈັດໄຝຫຼືຝ້ານັ້ນໃຫ້ຫາຍເສຍ ຫາກບໍ່ພົ້ກໍຈະພໍໃຈວ່າ "ເປັນໂຊກຂອງເຮົາແທ້ນໍ ໃບໜ້າຂອງເຮົາກ້ຽງມົດຈົດ" ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຖ້າພິຈາລະນາຢູ່ເຫັນແຈ້ງບາບອະກຸສົນທຳເຫຼົ່ານັ້ນ ແມ່ນທັງໝົດທີ່ຍັງລະບໍ່ໄດ້ ພິກຂຸນັ້ນຄວນພະຍາຍາມເພື່ອລະບາບອະກຸສົນທຳເຫຼົ່ານັ້ນທັງໝົດເສຍ ຖ້າພິກຂຸພິຈາລະນາຢູ່ ບໍ່ເຫັນແຈ້ງບາບອະກຸສົນທຳເຫຼົ່ານີ້ແມ່ນທັງໝົດທີ່ລະໄດ້ແລ້ວໃນຕົນ ພິກຂຸນັ້ນ ຜູ້ສຶກສາຢ່າງຕໍ່ເນື່ອງໃນກຸສົນທຳທັງຫຼາຍທັງກາງເວັນກາງຄືນ ກໍຈະຢູ່ດ້ວຍປີຕິແລະປາໂມດໄດ້ໂດຍງ່າຍ"

ທ່ານພຣະມະຫາໂມກຄັນລານະໄດ້ກ່າວພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງ ຊົມຊື່ນ ພາສິດຂອງທ່ານພຣະມະຫາໂມກຄັນລານະ ດັ່ງນີ້ແລ

**ອະນຸມານສູດທີ ໕ ຈົບ**

# ໖. ເຈໂຕຂີລະສູດ

## ວ່າດ້ວຍກິເລດເຄື່ອງຕຶງຈິດເໝືອນຕະປູ

[໑໘໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການ ທີ່ພິກຂຸອົງໃດອົງໜຶ່ງຍັງລະບໍ່ໄດ້ ກິເລດເຄື່ອງມັດໃຈ ໕ ປະການ ທີ່ພິກຂຸອົງໃດອົງໜຶ່ງຍັງຕັດບໍ່ຂາດ ທ່ານຈັກເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

ກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການ ທີ່ພິກຂຸນັ້ນຍັງລະບໍ່ໄດ້ ມີອັນໃດແດ່?

ຄື ພິກຂຸໃນທຳວິໄນນີ້

໑. ເຄືອບແຄງ ສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສາດສະດາ ຈິດຂອງພິກຂຸຜູ້ເຄືອບແຄງ ສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສາດສະດານັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ່ ໑ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງລະບໍ່ໄດ້

໒. ເຄືອບແຄງ ສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນທຳ ຯລຯ ນີ້ເປັນກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ່ ໒ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງລະບໍ່ໄດ້

໓. ເຄືອບແຄງ ສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສົງ ຯລຯ ນີ້ເປັນກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ່ ໓ ທີ່ພິກຂຸຜູ້ມີີີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງລະບໍ່ໄດ້

໔. ເຄືອບແຄງ ສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສິກຂາ (ຂໍ້ທີ່ຈະຕ້ອງສຶກສາ) ຯລຯ ນີ້ເປັນກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ່ ໔ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງລະບໍ່ໄດ້

໕. ເປັນຜູ້ໂກດ ບໍ່ພໍໃຈ ມີຈິດຖືກໂທສະ (ຄວາມຄິດປະທຸດສະຮ້າຍ) ກະທົບ ມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍ ຈິດຂອງພິກຂຸຜູ້ໂກດ ບໍ່ພໍໃຈ ມີຈິດຖືກໂທສະກະທົບມີຈິດແຂງກະດ້າງໃນເພື່ອນພົມຈາຣີທັງຫຼາຍນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດ

ເໝືອນຕະປູປະການທີ່ ໕ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງລະ ບໍ່ໄດ້

ເຫຼົ່ານີ້ ເປັນກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການ ທີ່ພິກຂຸນັ້ນຍັງລະບໍ່ໄດ້

[໑໗໘] ກິເລດເຄື່ອງມັດໃຈ ໕ ປະການ ທີ່ພິກຂຸນັ້ນຍັງຕັດບໍ່ຂາດ ມີອັນໃດແດ່?

ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມທະຍານຢາກໃນກາມ ຈິດຂອງພິກຂຸຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມທະຍານຢາກໃນກາມນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໑ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງຕັດບໍ່ຂາດ

໒. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນກາຍ ຯລຯ ນີ້ເປັນກິເລດເຄື່ອງມັດໃຈປະການທີ່ ໒ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງຕັດ ບໍ່ຂາດ

໓. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນຮູບ ຯລຯ ນີ້ເປັນກິເລດເຄື່ອງມັດໃຈປະການ

ທີ່ ໓ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງຕັດບໍ່ຂາດ

໔. ສັນອາຫານຕາມຄວາມຕ້ອງການຈົນອີ່ມເກີນໄປ ປະກອບຄວາມສຸກໃນການນອນ ຄວາມສຸກໃນການນອນເອນຫຼັງ ຄວາມສຸກໃນການຫຼັບຢູ່ ຯລຯ ນີ້ເປັນກິເລດເຄື່ອງມັດໃຈປະການທີ່ ໔ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງຕັດບໍ່ຂາດ

໕. ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງ ວ່າ "ດ້ວຍສີນ ຂໍ້ວັດປະຕິບັດ ຕະບະ ຫຼື ພົມມະຈັນນີ້ ເຮົາຈັກເປັນເທບ ຫຼື ເທວະດາຕົນໃດຕົນໜຶ່ງ" ຈິດຂອງພິກຂຸຜູ້ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງວ່າ "ດ້ວຍສີນ ຂໍ້ວັດປະຕິບັດ ຕະບະ ຫຼື ພົມມະຈັນນີ້ ເຮົາຈັກເປັນເທບ ຫຼື ເທວະດາຕົນໃດຕົນໜຶ່ງ" ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງຜູກໃຈປະການທີ ໕ ທີ່ພິກຂຸຜູ້ມີຈິດ ບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງຕັດບໍ່ຂາດ

ເຫຼົ່ານີ້ ເປັນກິເລດເຄື່ອງມັດໃຈ ໕ ປະການ ທີ່ພິກຂຸນັ້ນຍັງຕັດບໍ່ຂາດ

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການນີ້ ທີ່ພິກຂຸອົງໃດອົງໜຶ່ງຍັງລະບໍ່ໄດ້ ກິເລດເຄື່ອງມັດໃຈ ໕ ປະການນີ້ ທີ່ພິກຂຸອົງໃດອົງໜຶ່ງ ຍັງຕັດບໍ່ຂາດ ທ່ານຈັກເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

[໑໗໗] ພິກຂຸທັງຫຼາຍ ເປັນໄປໄດ້ທີ່ກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການ ທີ່ພິກຂຸອົງໃດອົງໜຶ່ງລະໄດ້ແລ້ວ ກິເລດເຄື່ອງມັດໃຈ ໕ ປະການ ທີ່ພິກຂຸອົງໃດອົງໜຶ່ງຕັດຂາດແລ້ວ ທ່ານຈັກເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

ກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການ ທີ່ພິກຂຸນັ້ນລະໄດ້ແລ້ວ ມີອັນໃດແດ່?

ຄື ພິກຂຸໃນທຳວິໄນນີ້

໑. ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນສາດສະດາ ຈິດຂອງພິກຂຸຜູ້ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນສາດສະດານັ້ນ ຍ່ອມນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດເໝືອນຕະປູ ປະການທີ່ ໑ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ

໔. ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນທຳ ຯລຯ ນີ້ເປັນ ກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ່ ໔ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະເຮັດຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ

໓. ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນສົງ ຯລຯ ນີ້ເປັນກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ່ ໓ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະເຮັດຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ

໔. ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນສິກຂາ ຯລຯ ນີ້ເປັນ ກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ່ ໔ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະເຮັດຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ

໕. ເປັນຜູ້ບໍ່ໂກດ ພໍໃຈ ມີຈິດບໍ່ຖືກໂທສະກະທົບ ມີຈິດບໍ່ແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍ ຈິດຂອງພິກຂຸຜູ້ບໍ່ໂກດ ພໍໃຈ ມີຈິດບໍ່ຖືກໂທສະກະທົບ ມີຈິດບໍ່ແຂງກະດ້າງໃນເພື່ອນພົມມະຈາຣີ

ທັງຫຼາຍນັ້ນ ຍ່ອມນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ່ ໕ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະເຮັດຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ ເຫຼົ່ານີ້ ເປັນກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການ ທີ່ພິກຂຸນັ້ນລະໄດ້ແລ້ວ

[໑໗໘] ກິເລດເຄື່ອງມັດໃຈ ໕ ປະການ ທີ່ພິກຂຸນັ້ນຕັດຂາດແລ້ວ ມີອັນໃດແດ່?

ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມທະຍານຢາກໃນກາມຈິດຂອງພິກຂຸຜູ້ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມທະຍານຢາກໃນກາມ ຍ່ອມນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງມັດໃຈປະການທີ່ ໑ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຕັດຂາດແລ້ວ

໒. ເປັນຜູ້ປາສະຈາກຄວາມກຳໜັດໃນກາຍ ຯລຯ ນີ້ເປັນກິເລດເຄື່ອງມັດໃຈ ປະການທີ ໒ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳ

ເພັງພຽນ ຕັດຂາດແລ້ວ

໓. ເປັນຜູ້ປາສະຈາກຄວາມກຳໜັດໃນຮູບ ໗ລ໗ ນີ້ເປັນກິເລດເຄື່ອງມັດໃຈ ປະການທີ ໓ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຕັດຂາດແລ້ວ

໔. ສັນອາຫານຕາມຕ້ອງການຈົນອີ່ມແລ້ວ ບໍ່ປະກອບຄວາມສຸກໃນການນອນ ຄວາມສຸກໃນການນອນເອນຫຼັງ ຄວາມສຸກໃນການຫຼັບຢູ່ ໗ລ໗ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໔ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຕັດຂາດແລ້ວ

໕. ບໍ່ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງວ່າ "ດ້ວຍສິນຂໍ້ວັດປະຕິບັດ ຕະບະ ຫຼື ພົມມະຈັນນີ້ ເຮົາຈັກເປັນເທບ ຫຼື ເທບຕົນໃດຕົນໜຶ່ງ" ຈິດຂອງພິກຂຸຜູ້ບໍ່ປະພຶດພົມມະຈັນ ດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງວ່າ "ດ້ວຍສິນ ຂໍ້ວັດປະຕິບັດ ຕະບະ ຫຼື ພົມມະຈັນນີ້ ເຮົາຈັກເປັນເທບຫຼືເທບຕົນໃດຕົນໜຶ່ງ" ຍ່ອມນ້ອມໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງມັດໃຈປະການທີ່ ໕ ທີ່ ພິກຂຸຜູ້ນ້ອມຈິດໄປເພື່ອຄວາມພຽນ ເພື່ອປະກອບເລື້ອຍ ໆ ເພື່ອ ກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຕັດຂາດແລ້ວ

ເຫຼົ່ານີ້ ເປັນກິເລດເຄື່ອງມັດໃຈ ໕ ປະການ ທີ່ພິກຂຸນັ້ນຕັດຂາດແລ້ວ

ພິກຂຸທັງຫຼາຍ ເປັນໄປໄດ້ທີ່ກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການນີ້ ທີ່ພິກຂຸອົງໃດອົງໜຶ່ງລະໄດ້ແລ້ວ ກິເລດເຄື່ອງມັດໃຈ ໕ ປະການນີ້ ທີ່ພິກຂຸອົງໃດອົງໜຶ່ງຕັດຂາດແລ້ວ ທ່ານຈັກເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

## ອຸປະມາດ້ວຍໄກ່ແມ່ຟັກໄຂ່

[໑໗໙] ພິກຂຸນັ້ນ ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ ມີຄວາມພຽນຍິ່ງເປັນທີ່ ໕ ພິກຂຸຜູ້ມີອົງ ໑໕ ລວມທັງຄວາມພຽນອັນຍິ່ງຢ່າງນີ້ນັ້ນຍ່ອມເປັນຜູ້ຄວນແກ່ຄວາມເບື່ອໜ່າຍຍິ່ງ ຄວນແກ່ການຕັດສະຮູ້ ແລະ ຄວນແກ່ການບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດ

ປຽບເໝືອນ ໄຂ່ ໘ ໜອງ ໑໐ ໜອງ ຫຼື ໑໒ ໜອງ ທີ່ໄກ່ແມ່ນອນກົກໄວ້ຢ່າງດີ ໃຫ້

ຄວາມ ອົບອຸ່ນຢ່າງສະໝ່ຳສະເໝີ ຟັກແລ້ວຢ່າງດີ ເຖິງວ່າໄກ່ແມ່ນັ້ນຈະບໍ່ເກີດຄວາມປາຖະໜາ ແນວນີ້ວ່າ "ຖ້າແນວໃດ ຂໍໃຫ້ໄກ່ນ້ອຍເຫຼົ່ານີ້ເພິ່ງໃຊ້ປາຍເລັບຫຼືຈະງອຍປາກ ເຈາະທຳລາຍເປືອກໄຂ່ອອກມາໂດຍສະຫວັດດີພາບ" ກໍຕາມ ເຖິງຢ່າງນັ້ນໄກ່ນ້ອຍເຫຼົ່ານັ້ນ ກໍຈັກເຈາະທຳລາຍເປືອກໄຂ່ ດ້ວຍປາຍເລັບ ຫຼື ສົບແຫຼມອອກມາໂດຍສະຫວັດດີພາບໄດ້ເປັນທຳມະດາ ແມ່ນສັນໃດ

ພິກຂຸທັງຫຼາຍ ພິກຂຸຜູ້ມີອົງ ໑໕ ລວມທັງຄວາມພຽນອັນຍິ່ງຢ່າງນີ້ ກໍສັນນັ້ນ ຄືກັນ ຍ່ອມເປັນຜູ້ຄວນແກ່ຄວາມເບື່ອໜ່າຍຍິ່ງ ຄວນແກ່ການຕັດສະຮູ້ ແລະຄວນແກ່ການ ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດ"

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ເຈໂຕຂີລະສູດທີ ໖ ຈົບ**

# ໗. ວະນະປັດຖະສູດ

## ວ່າດ້ວຍການຢູ່ປ່າ

[໑໙໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ "ພິກຂຸທັງຫຼາຍ ເຮົາຈັກສະແດງທຳບັນລະຍາຍວ່າດ້ວຍການຢູ່ປ່າແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

[໑໙໑] "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ເຂົ້າໄປຢູ່ອາໄສປ່າຕຶບແຫ່ງໃດແຫ່ງໜຶ່ງ ເມື່ອທ່ານເຂົ້າໄປຢູ່ອາໄສປ່າຕຶບນັ້ນ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະ ພິກຂຸນັ້ນກໍບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຕົນຍັງບໍ່ໄດ້ບັນລຸ ແລະ ປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ໌ ທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍ

ຍາກ ພິກຂຸນັ້ນຄວນພິຈາລະນາແນວນີ້ວ່າ "ເຮົາເຂົ້າມາຢູ່ອາໄສປ່າຕຶບນີ້ ເມື່ອເຮົາເຂົ້າມາຢູ່ອາໄສປ່າຕຶບນີ້ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະ ເຮົາກໍບໍ່ໄດ້ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ແລະປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍກໍເກີດຂຶ້ນໄດ້ໂດຍຍາກ" ພິກຂຸນັ້ນ ຄວນຫຼີກໜີໄປຈາກປ່າຕຶບນັ້ນເສຍທັນທີ ບໍ່ວ່າໃນເວລາກາງຄືນ ຫຼື ໃນເວລາກາງເວັນ

[໑໘໔] ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ເຂົ້າໄປຢູ່ອາໄສປ່າຕຶບແຫ່ງໃດແຫ່ງໜຶ່ງ ເມື່ອທ່ານເຂົ້າໄປຢູ່ອາໄສປ່າຕຶບນັ້ນ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະ ພິກຂຸນັ້ນກໍບໍ່ໄດ້ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ແຕ່ປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍບໍ່ຍາກ ພິກຂຸນັ້ນ ຄວນພິຈາລະນາແນວນີ້ວ່າ "ເຮົາເຂົ້າມາຢູ່ອາໄສປ່າຕຶບນີ້ ເມື່ອເຮົາເຂົ້າມາຢູ່ອາໄສປ່າຕຶບນີ້ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະ ເຮົາກໍບໍ່ໄດ້ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ແຕ່ປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍບໍ່ຍາກ ແຕ່ເຮົາບໍ່ໄດ້ອອກຈາກເຮືອນມາບວດເປັນບັນພະຊິດຍ້ອນເຫດແຫ່ງຈີວອນ ຯລຯ ຍ້ອນເຫດແຫ່ງບິນທະບາດ ຯລຯ ຍ້ອນເຫດແຫ່ງເສນາສະນະ ເຮົາບໍ່ໄດ້ອອກຈາກເຮືອນ ບວດເປັນບັນພະຊິດຍ້ອນເຫດແຫ່ງຄິລານະປັດໄຈເພສັດບໍຣິຂານ ເມື່ອເປັນເຊັ່ນນັ້ນ ເມື່ອເຮົາເຂົ້າໄປຢູ່ອາໄສປ່າຕຶບນີ້ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະເຮົາກໍບໍ່ໄດ້ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ" ພິກຂຸນັ້ນ ເມື່ອຮູ້ແລ້ວຢ່າງນີ້ ຄວນຫຼີກໜີໄປຈາກປ່າຕຶບນັ້ນເສຍ ບໍ່ຄວນຢູ່ຕໍ່ໄປອີກ

## ເຫດຜົນຂອງການຢູ່ປ່າ

[໑໘໕] ອັນໜຶ່ງ ພິກຂຸໃນທຳວິໄນນີ້ເຂົ້າໄປຢູ່ອາໄສປ່າຕຶບແຫ່ງໃດແຫ່ງໜຶ່ງ ເມື່ອທ່ານເຂົ້າໄປຢູ່ອາໄສປ່າຕຶບນັ້ນ ສະຕິທີ່ຍັງບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະ ພິກຂຸນັ້ນກໍບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ສ່ວນປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍຍາກ ພິກຂຸນັ້ນຄວນພິຈາລະນາແນວນີ້ວ່າ "ເຮົາເຂົ້າມາຢູ່ອາໄສປ່າຕຶບນີ້ ເມື່ອເຮົາເຂົ້າມາຢູ່ອາໄສປ່າຕຶບນີ້ ສະຕິທີ່ຍັງບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະເຮົາກໍບັນລຸ

ທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ສ່ວນປັດໄຈເຄື່ອງດຳລົງຊີວິດຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍຍາກ ແຕ່ເຮົາບໍ່ໄດ້ອອກຈາກເຮືອນບວດເປັນບັນພະຊິດຍ້ອນເຫດແຫ່ງຈີວອນ ฯລฯ ຍ້ອນເຫດແຫ່ງບິນທະບາດ ฯລฯ ຍ້ອນເຫດແຫ່ງເສນາສະນະ ເຮົາບໍ່ໄດ້ອອກຈາກເຮືອນບວດເປັນບັນພະຊິດຍ້ອນເຫດແຫ່ງ ຄິລານະປັດໄຈເພສັດບໍຣິຂານ ເມື່ອເປັນເຊັ່ນນັ້ນ ທີ່ເຮົາເຂົ້າໄປຢູ່ອາໄສປ່າຕຶບນີ້ ສະຕິທີ່ຍັງ ບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະ ເຮົາກໍໄດ້ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ" ພິກຂຸນັ້ນ ຮູ້ແລ້ວ ຄວນຢູ່ໃນປ່າຕຶບນັ້ນ ບໍ່ຄວນຫຼີກໜີໄປ

[໑໘໔] ອັນໜຶ່ງ ພິກຂຸໃນທຳວິໄນນີ້ເຂົ້າໄປຢູ່ອາໄສປ່າຕຶບແຫ່ງໃດແຫ່ງໜຶ່ງ ເມື່ອທ່ານເຂົ້າໄປຢູ່ອາໄສປ່າຕຶບນັ້ນ ສະຕິທີ່ຍັງບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະ ພິກຂຸນັ້ນກໍບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ແລະ ປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍບໍ່ຍາກ ພິກຂຸນັ້ນຄວນພິຈາລະນາແນວນີ້ວ່າ "ເຮົາເຂົ້າມາຢູ່ອາໄສປ່າຕຶບນີ້ ເມື່ອເຮົາເຂົ້າມາຢູ່ອາໄສປ່າຕຶບນີ້ ສະຕິທີ່ຍັງບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະ ເຮົາກໍບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ແລະ ປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍບໍ່ຍາກ" ພິກຂຸນັ້ນ ຄວນຢູ່ໃນປ່າຕຶບນັ້ນຈົນຕະຫຼອດຊີວິດ ບໍ່ຄວນຫຼີກໜີໄປໄສ

## ເຫດຜົນການຢູ່ອາໄສເຮືອນເປັນຕົ້ນ

[໑໘໕] ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ເຂົ້າໄປຢູ່ອາໄສເຮືອນແຫ່ງໃດແຫ່ງໜຶ່ງ ฯລฯ ເຂົ້າໄປຢູ່ອາໄສນິຄົມແຫ່ງໃດແຫ່ງໜຶ່ງ ฯລฯ ເຂົ້າໄປຢູ່ອາໄສນະຄອນແຫ່ງໃດແຫ່ງໜຶ່ງ ฯລฯ ເຂົ້າໄປຢູ່ອາໄສຊົນນະບົດແຫ່ງໃດແຫ່ງໜຶ່ງ ฯລฯ ເຂົ້າໄປຢູ່ອາໄສບຸກຄົນໃດບຸກຄົນໜຶ່ງ ເມື່ອທ່ານເຂົ້າໄປຢູ່ອາໄສບຸກຄົນນັ້ນ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະ ພິກຂຸນັ້ນ ກໍບໍ່ບັນລຸທຳອັນເປັນແດນກະເສມ ຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ສ່ວນປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍຍາກ ພິກຂຸນັ້ນ ຄວນພິຈາລະນາແນວນີ້ວ່າ "ເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ເມື່ອເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະ ເຮົາກໍບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ແລະ

ປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍຍາກ" ພິກຂຸນັ້ນ ບໍ່ຕ້ອງບອກລາ ຄວນຫຼີກໜີໄປທັນທີ ບໍ່ວ່າໃນເວລາກາງຄືນ ຫຼື ໃນເວລາກາງເວັນ ບໍ່ຄວນຕິດຕາມບຸກຄົນນັ້ນ

[໑໗໖] ອັນໜຶ່ງ ພິກຂຸໃນທຳວິໄນນີ້ເຂົ້າໄປຢູ່ອາໄສບຸກຄົນໃດບຸກຄົນໜຶ່ງ ເມື່ອທ່ານເຂົ້າໄປຢູ່ອາໄສບຸກຄົນນັ້ນ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະ ພິກຂຸນັ້ນກໍບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ແຕ່ປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍບໍ່ຍາກ ພິກຂຸນັ້ນຄວນພິຈາລະນາຢ່າງນີ້ວ່າ "ເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ເມື່ອເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະເຮົາກໍບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ສ່ວນປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍບໍ່ຍາກ ແຕ່ເຮົາບໍ່ໄດ້ອອກຈາກເຮືອນບວດເປັນບັນພະຊິດຍ້ອນເຫດແຫ່ງຈີວອນ ຯລຯ ຍ້ອນເຫດແຫ່ງ ບິນທະບາດ ຯລຯ ຍ້ອນເຫດແຫ່ງເສນາສະນະ ເຮົາບໍ່ໄດ້ອອກຈາກເຮືອນບວດເປັນບັນພະຊິດ ເຫດແຫ່ງຄິລານະປັດໄຈເພສັດບໍຣິຂານເມື່ອເປັນເຊັ່ນນັ້ນ ເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ສະຕິທີ່ຍັງບໍ່ຜາກົດກໍບໍ່ຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍບໍ່ຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍບໍ່ສິ້ນໄປ ແລະ ເຮົາກໍບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ" ພິກຂຸນັ້ນ ເຖິງຮູ້ແລ້ວກໍຄວນບອກລາກ່ອນແລ້ວຈຶ່ງຫຼີກໜີໄປ ບໍ່ຄວນຕິດຕາມບຸກຄົນນັ້ນ

[໑໗໗] ອັນໜຶ່ງ ພິກຂຸໃນທຳວິໄນນີ້ເຂົ້າໄປຢູ່ອາໄສບຸກຄົນໃດບຸກຄົນໜຶ່ງ ເມື່ອທ່ານເຂົ້າໄປຢູ່ອາໄສບຸກຄົນນັ້ນ ສະຕິທີ່ຍັງບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະ ພິກຂຸນັ້ນກໍບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ສ່ວນປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ຍ່ອມເກີດຂຶ້ນໄດ້ໂດຍຍາກ ພິກຂຸນັ້ນຄວນພິຈາລະນາຢ່າງນີ້ວ່າ "ເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ເມື່ອເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ສະຕິທີ່ຍັງບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະ ເຮົາກໍບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ສ່ວນປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍຍາກ ແຕ່ເຮົາບໍ່ໄດ້ອອກຈາກເຮືອນບວດເປັນບັນພະຊິດຍ້ອນເຫດແຫ່ງຈີວອນ ຯລຯ ຍ້ອນເຫດແຫ່ງບິນທະບາດ ຯລຯ ຍ້ອນເຫດແຫ່ງເສນາສະນະ

ເຮົາບໍ່ໄດ້ອອກຈາກເຮືອນບວດເປັນບັນພະຊິດຍ້ອນເຫດແຫ່ງ ຄິລານະປັດໄຈເພສັດບໍຣິຂານ ເມື່ອເປັນເຊັ່ນນັ້ນ ເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ສະຕິທີ່ຍັງບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະ ເຮົາກໍບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ" ພິກຂຸນັ້ນ ເຖິງແມ່ນຈະຮູ້ແລ້ວກໍຄວນຕິດຕາມບຸກຄົນນັ້ນ ຍັງບໍ່ຄວນຫຼີກໄປ

[໑໘໗] ອັນໜຶ່ງ ພິກຂຸໃນທຳວິໄນນີ້ເຂົ້າໄປຢູ່ອາໄສບຸກຄົນໃດບຸກຄົນໜຶ່ງ ເມື່ອທ່ານເຂົ້າໄປຢູ່ອາໄສບຸກຄົນນັ້ນ ສະຕິທີ່ຍັງບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະ ທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະ ພິກຂຸນັ້ນຍ່ອມບັນລຸທຳອັນເປັນແດນກະເສມຈາກໂຍຄະອັນ ປະເສີດທີ່ຍັງບໍ່ໄດ້ບັນລຸ ສ່ວນປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ເກີດຂຶ້ນໄດ້ໂດຍບໍ່ຍາກ ພິກຂຸນັ້ນຄວນພິຈາລະນາຢ່າງງນີ້ວ່າ "ເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ເມື່ອເຮົາເຂົ້າໄປຢູ່ອາໄສບຸກຄົນນີ້ ສະຕິທີ່ຍັງບໍ່ຜາກົດກໍຜາກົດ ຈິດທີ່ຍັງບໍ່ຕັ້ງໝັ້ນກໍຕັ້ງໝັ້ນ ອາສະວະທີ່ຍັງບໍ່ສິ້ນໄປກໍສິ້ນໄປ ແລະ ເຮົາກໍບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ໄດ້ບັນລຸ ສ່ວນປັດໄຈເຄື່ອງດຳລົງຊີວິດ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານທີ່ບັນພະຊິດຈຳຕ້ອງນຳມາໃຊ້ສອຍ ຍ່ອມເກີດຂຶ້ນໄດ້ໂດຍບໍ່ຍາກ" ພິກຂຸນັ້ນຄວນຕິດຕາມ ບຸກຄົນນັ້ນໄປຈົນຕະຫຼອດຊີວິດ ບໍ່ຄວນຫຼີກໜີໄປ ເຖິງແມ່ນວ່າຈະຖືກຂັບໄລ່ກໍຕາມ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊົມຊື່ນພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ວະນະປັດຖະສູດທີ ໗ ຈົບ**

# ໘. ມະທຸປິນຖິກະສູດ

## ວ່າດ້ວຍທຳມະເທດສະໜາອັນມ່ວນ

[໑໘໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນກຣຸງກະບິນລະພັດ ກັບຈາກບິນທະບາດພາຍຫຼັງສະເຫວີຍ

ພຣະກະຍາຫານສຳເລັດແລ້ວ ສະເດັດເຂົ້າໄປສູ່ປ່າມະຫາວັນເພື່ອຊົງພັກຜ່ອນກາງເວັນ ແລ້ວຈຶ່ງປະທັບພັກຜ່ອນກາງເວັນໂຄນຕົ້ນໝາກຕູມໜຸ່ມ ຝ່າຍທັນດະປານິສາກະຍະກຳລັງຍ່າງທ່ຽວຊົມທິວທັດ ໄດ້ສະເດັດເຂົ້າໄປສູ່ປ່າມະຫາວັນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຈົນເຖິງຕົ້ນໝາກຕູມໜຸ່ມ ແລ້ວສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວຢືນຂຶ້ນຢັນໄມ້ຄ້ອນເຖົ້າລົງທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ພຣະສະມະນະມີປົກກະຕິກ່າວແນວໃດ? ບອກແນວໃດ?"

## ຕອບບັນຫາທັນດະປານີ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຜູ້ມີອາຍຸ ບຸກຄົນມີປົກກະຕິກ່າວແນວໃດຈຶ່ງບໍ່ໂຕ້ຖຽງກັບຜູ້ໃດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດແລ້ວດຳລົງຢູ່ໃນໂລກ ອັນໜຶ່ງ ສັນຍາທັງຫຼາຍຍ່ອມບໍ່ຄອບງຳພາມຜູ້ຢູ່ປາສະຈາກກາມທັງຫຼາຍ ຜູ້ບໍ່ມີຄວາມສົງໄສ ຜູ້ຕັດຄວາມຄະນອງໄດ້ ຜູ້ປາສະຈາກຄວາມທະຍານຢາກໃນພົບນ້ອຍພົບໃຫຍ່ໄດ້ໂດຍປະການໃດ ເຮົາມີປົກກະຕິກ່າວແນວນັ້ນ ບອກສອນແນວນັ້ນ ໂດຍປະການນັ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນັ້ນແລ້ວ ທັນດະປານິສາກະຍະສັ່ນຫົວ ແລບລີ້ນເຮັດໜ້າຜາກຍູ້ເປັນ ๓ ຮອຍ ຖືໄມ້ການເທົ້າຍັນຂຶ້ນແລ້ວຈາກໄປ

[໔໐໐] ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກທີ່ຫຼີກລີ້ເຂົ້າໄປສູ່ນິໂຄທາຣາມ ແລ້ວປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ ເມື່ອເຊົ້ານີ້ ເຮົາຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປບິນທະບາດໃນກຣຸງກະບິນລະພັດ ກັບຈາກບິນທະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ຈຶ່ງເຂົ້າໄປສູ່ປ່າມະຫາວັນເພື່ອພັກຜ່ອນກາງເວັນ ແລ້ວນັ່ງພັກຜ່ອນກາງເວັນຢູ່ໃຕ້ເຫງົ້າຕົ້ນໝາກຕູມໜຸ່ມ ແມ່ນທັນດະປານິສາກະຍະກໍຍ່າງທ່ຽວຊົມທິວທັດເຂົ້າໄປສູ່ປ່າມະຫາວັນຢູ່ ໄດ້ເຂົ້າໄປຫາເຮົາຈົນເຖິງຕົ້ນໝາກຕູມໜຸ່ມ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວໄດ້ຢືນຂຶ້ນຢັນໄມ້ຄ້ອນເຖົ້າລົງທີ່ສົມຄວນ ແລ້ວໄດ້ຖາມເຮົາວ່າ "ພຣະສະມະນະ ມີປົກກະຕິກ່າວແນວໃດ? ບອກແນວໃດ?" ເມື່ອທັນດະປານິສາກະຍະກ່າວແນວນັ້ນແລ້ວ ເຮົາໄດ້ຕອບວ່າ "ຜູ້ມີອາຍຸ ບຸກຄົນມີປົກກະຕິກ່າວແນວໃດຈຶ່ງຈະບໍ່ໂຕ້ຖຽງກັບຜູ້ອື່ນໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດແລ້ວດຳລົງຢູ່ໃນໂລກ

ອັນໜຶ່ງ ສັນຍາທັງຫຼາຍຍ່ອມບໍ່ຄອບງຳພາມຜູ້ຢູ່ປາສະຈາກກາມທັງຫຼາຍ ຜູ້ບໍ່ມີຄວາມສົງໄສ ຜູ້ຕັດຄວາມຄະນອງໄດ້ ຜູ້ປາສະຈາກຄວາມທະຍານຢາກໃນພົບນ້ອຍພົບໃຫຍ່ໄດ້ໂດຍ

ປະການໃດ ເຮົາມີປົກກະຕິກ່າວແນວນັ້ນ ບອກຢ່າງນັ້ນ ໂດຍປະການນັ້ນ" ເມື່ອເຮົາກ່າວແນວນັ້ນແລ້ວ ທັນດະປານີສາກະຍະສັ່ນຫົວ ແລບລີ້ນ ເຮັດໜ້າຜາກຍູ້ເປັນ ໓ ຮອຍ ຖືໄມ້ການເທົ້າຍັນຂຶ້ນແລ້ວຈາກໄປ"

## ຊົງສະແດງອຸດເທດ

[໔໐໑] ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນັ້ນແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າມີປົກກະຕິຕັດຢ່າງໃດຈຶ່ງຈະບໍ່ໂຕ້ຖຽງກັບຜູ້ອື່ນໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດແລ້ວດຳລົງຢູ່ໃນໂລກ ອັນໜຶ່ງ ສັນຍາທັງຫຼາຍຈະ ບໍ່ຄອບງຳພາມນັ້ນຜູ້ຢູ່ປາສະຈາກກາມທັງຫຼາຍ ຜູ້ບໍ່ມີຄວາມສົງໄສ ຜູ້ຕັດຄວາມ ຄະນອງໄດ້ ຜູ້ປາສະຈາກຄວາມທະຍານຢາກໃນພົບນ້ອຍພົບໃຫຍ່ໄດ້ແນວໃດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ແງ່ມຸມຕ່າງ ໆ ແຫ່ງປະປັນຈະສັນຍາຍ່ອມຄອບງຳບຸຣຸດ ຍ້ອນເຫດໃດ ຖ້າສິ່ງທີ່ບຸກຄົນຈະເພິ່ງຍິນດີ ຈະເພິ່ງຍອມຮັບ ຈະເພິ່ງຢຶດຖື ບໍ່ມີພາຍໃນ ຍ້ອນເຫດນັ້ນ ຂໍ້ນີ້ເປັນທີ່ສຸດແຫ່ງຣາຄານຸໄສ ເປັນທີ່ສຸດແຫ່ງປະຕິຄານຸໄສ ເປັນທີ່ສຸດແຫ່ງທິດຖານຸໄສ ເປັນທີ່ສຸດແຫ່ງວິຈິກິດສານຸໄສ ເປັນທີ່ສຸດແຫ່ງມານານຸໄສ ເປັນທີ່ສຸດແຫ່ງພະວະຣາຄານຸໄສ ເປັນທີ່ສຸດແຫ່ງອະວິດຊານຸໄສ ແລະ ເປັນທີ່ສຸດແຫ່ງການຖືທ່ອນໄມ້ ການຖືອາວຸດ ການຜິດຖຽງ ການແກ່ງແຍ່ງ ການຜິດຖຽງ ການສັບສໍ່ ຍຸແຍ ແລະ ການກ່າວຕົວະ ບາບອະກຸສົນທຳເຫຼົ່ານີ້ ຍ່ອມດັບໄປໂດຍບໍ່ເຫຼືອຍ້ອນເຫດນັ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດເຈົ້າໄດ້ຕັດດັ່ງນີ້ແລ້ວ ກໍສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ທີ່ປະທັບ

[໔໐໔] ຄັ້ງນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປໄດ້ບໍ່ດົນ ພິກຂຸເຫຼົ່ານັ້ນໄດ້ມີຄວາມສົງໄສວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດນີ້ແກ່ພວກເຮົາໂດຍຫຍໍ້ວ່າ "ພິກຂຸ ແງ່ມຸມຕ່າງ ໆ ແຫ່ງປະປັນຈະສັນຍາຍ່ອມຄອບງຳບຸຣຸດຍ້ອນເຫດໃດ ຖ້າສິ່ງທີ່ບຸກຄົນຈະເພິ່ງຍິນດີ ຈະເພິ່ງຍອມຮັບ ຈະເພິ່ງຢຶດຖື ບໍ່ມີຍ້ອນເຫດນັ້ນ ຂໍ້ນີ້ເປັນທີ່ສຸດແຫ່ງຣາຄານຸໄສ ເປັນທີ່ສຸດແຫ່ງປະຕິຄານຸໄສ ເປັນທີ່ສຸດແຫ່ງທິຕຖານຸໄສ ເປັນທີ່ສຸດແຫ່ງວິຈິກິດສານຸໄສ ເປັນທີ່ສຸດແຫ່ງມານານຸໄສ ເປັນທີ່ສຸດແຫ່ງພະວະຣາຄານຸໄສ ເປັນທີ່ສຸດແຫ່ງອະວິດຊານຸໄສ ແລະເປັນທີ່ສຸດແຫ່ງການຖືທ່ອນໄມ້ ການຖືອາວຸດ ການຜິດຖຽງ ການແກ່ງແຍ່ງ ການຜິດຖຽງ ການສັບສໍ່ຍຸແຍ ແລະ ການກ່າວຕົວະ ບາບອະກຸສົນທຳເຫຼົ່ານີ້ ຍ່ອມດັບໄປໂດຍບໍ່ເຫຼືອຍ້ອນເຫດນັ້ນ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານຄະຫຍາຍອອກໄປອີກ ໄດ້ສະເດັດລຸກຈາກ

ພຸດທະອາດເຂົ້າໄປສູ່ທີ່ປະທັບ ແລ້ວຜູ້ໃດນໍ? ຈະເພິ່ງຊີ້ແຈ່ງເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານອອກໄປຕື່ມອີກໄດ້"

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນ ເກີດຄວາມຄິດຂຶ້ນວ່າ "ທ່ານມະຫາກັດຈານະນີ້ ພຣະສາດສະດາຊົງຍົກຍ້ອງ ແລະ ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ທ່ານມະຫາກັດຈານະຄົງຈະສາມາດຊີ້ແຈ່ງເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍ ພິດສະດານໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາທັງຫຼາຍຄວນເຂົ້າໄປຫາທ່ານມະຫາກັດຈານະຈົນເຖິງທີ່ຢູ່ ແລ້ວຄວນສອບຖາມເນື້ອຄວາມນີ້ກັບທ່ານມະຫາກັດຈານະໃຫ້ຮູ້ດີກວ່າ"

ລຳດັບນັ້ນ ພິກຂຸເຫຼົ່ານັ້ນໄດ້ເຂົ້າໄປຫາທ່ານພຣະມະຫາກັດຈານະຈົນເຖິງທີ່ຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງໄດ້ນັ່ງລົງທີ່ສົມຄວນ ໄດ້ກ່າວກັບທ່ານພຣະມະຫາກັດຈານະ ວ່າ

"ທ່ານກັດຈານະ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງອຸດເທດນີ້ແກ່ພວກເຮົາໂດຍຫຍໍ້ວ່າ"

"ພິກຂຸ ແງ່ມຸມຕ່າງ ໆ ແຫ່ງປະປັນຈະສັນຍາຍ່ອມຄອບງຳບຸຣຸດຍ້ອນເຫດໃດ ຖ້າສິ່ງທີ່ບຸກຄົນຈະເພິ່ງຍິນດີ ຈະເພິ່ງຍອມຮັບ ຈະເພິ່ງຍຶດຖື ບໍ່ມີຍ້ອນເຫດນັ້ນ ຂໍ້ນີ້ ເປັນທີ່ສຸດແຫ່ງຣາຄານຸໄສ ๗ລ๗ ບາບອະກຸສົນທຳເຫຼົ່ານີ້ ຍ່ອມດັບໄປໂດຍບໍ່ເຫຼືອໃນຍ້ອນເຫດນັ້ນ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານ ຊົງລຸກຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຈາກໄປໄດ້ບໍ່ດົນ ພວກຂ້າພະເຈົ້າໄດ້ເກີດຄວາມສົງໄສວ່າ "ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດນີ້ແກ່ພວກເຮົາໂດຍຫຍໍ້ວ່າ "ພິກຂຸ ແງ່ມຸມຕ່າງ ໆ ແຫ່ງປະປັນຈະສັນຍາ ຍ່ອມຄອບງຳບຸຣຸດຍ້ອນເຫດໃດ ຖ້າສິ່ງທີ່ບຸກຄົນຈະເພິ່ງຍິນດີ ຈະເພິ່ງຍອມຮັບ ຈະເພິ່ງຍຶດຖື ບໍ່ມີຍ້ອນເຫດນັ້ນ ຂໍ້ນີ້ເປັນທີ່ສຸດແຫ່ງຣາຄານຸໄສ ๗ລ๗ ບາບອະກຸສົນທຳເຫຼົ່ານີ້ ຍ່ອມດັບໄປໂດຍບໍ່ເຫຼືອໃນຍ້ອນເຫດນັ້ນ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານອອກໄປອີກ ຊົງລຸກຂຶ້ນຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ແລ້ວຜູ້ໃດນໍ? ຈະເພິ່ງຊີ້ແຈ່ງເນື້ອຄວາມແຫ່ງອຸດເທດ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານອອກໄປຕື່ມອີກໄດ້"

ທ່ານກັດຈານະ ພວກຂ້າພະເຈົ້າຄິດວ່າ "ທ່ານມະຫາກັດຈານະນີ້ເປັນຜູ້ທີ່ພຣະສາດສະດາຊົງຍົກຍ້ອງ ແລະ ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ທ່ານມະຫາກັດຈານະສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາທັງຫຼາຍຄວນເຂົ້າໄປຫາທ່ານມະຫາກັດຈານະຈົນເຖິງທີ່ຢູ່ ແລ້ວສອບຖາມເນື້ອຄວາມນີ້ກັບທ່ານມະຫາກັດຈານະໃຫ້ຮູ້ດີກວ່າ" ຂໍທ່ານ

ມະຫາກັດຈານະ ຈົ່ງຊີ້ແຈ່ງເນື້ອຄວາມນີ້ດ້ວຍເທີ້ນ"

[໔໐໘] ທ່ານພຣະມະຫາກັດຈານະຈຶ່ງຕອບວ່າ "ທ່ານຜູ້ມີອາຍຸທັງຫຼາຍ ອຸປະມາເໝືອນບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ແຕ່ແນມຜ່ານໂຄນແລະລຳຕົ້ນຂອງຕົ້ນໄມ້ໃຫຍ່ເຊິ່ງມີແກ່ນໄປ ເຂົາເຂົ້າໃຈວ່າແກ່ນໄມ້ຕ້ອງສະແຫວງຫາຢູ່ງ່າແລະໃບໄມ້ ແມ່ນສັນໃດ ຂໍ້ອຸປະໄມນີ້ກໍສັນນັ້ນ ເມື່ອພຣະສາດສະດາຊົງຜາກົດສະເພາະໜ້າທ່ານທັງຫຼາຍຢູ່ ທ່ານທັງຫຼາຍກໍແນມຜ່ານພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນໄປ ແລະເຂົ້າໃຈເນື້ອຄວາມນັ້ນວ່າຕ້ອງສອບຖາມກັບເຮົາ ແທ້ຈິງ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຮູ້ສິ່ງທີ່ຄວນຮູ້ ຊົງເຫັນສິ່ງທີ່ຄວນເຫັນ ເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີທຳ ເປັນພົມ ເປັນຜູ້ເຜີຍແຜ່ ປະກາດ ຂະຫຍາຍເນື້ອຄວາມ ເປັນຜູ້ໃຫ້ອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ແລະ ເວລານີ້ກໍເປັນເວລາອັນສົມຄວນທີ່ພວກທ່ານຈະທູນຖາມເນື້ອຄວາມນີ້ກັບພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນແລ້ວ ພຣະອົງຊົງຕອບແນວໃດ ທ່ານທັງຫຼາຍຄວນຊົງຈຳເນື້ອຄວາມນັ້ນໄວ້ຢ່າງນັ້ນເທີ້ນ"

ພິກຂຸເຫຼົ່ານັ້ນໄດ້ກ່າວຕອບວ່າ "ທ່ານກັດຈານະ ເປັນຄວາມຈິງທີ່ພຣະຜູ້ມີພຣະພາກເຈົ້າຊົງຮູ້ສິ່ງທີ່ຄວນຮູ້ ຊົງເຫັນສິ່ງທີ່ຄວນເຫັນ ເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີທຳ ເປັນພົມ ເປັນຜູ້ເຜີຍແຜ່ ປະກາດ ຂະຫຍາຍເນື້ອຄວາມ ເປັນຜູ້ໃຫ້ອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ແລະ ເວລານີ້ກໍເປັນເວລາອັນສົມຄວນທີ່ພວກຂ້າພະເຈົ້າຈະທູນຖາມເນື້ອຄວາມນີ້ກັບພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຕອບແນວໃດ ພວກຂ້າພະເຈົ້າຈະຊົງຈຳເນື້ອຄວາມນັ້ນໄວ້ຢ່າງນັ້ນ ແຕ່ອັນໜຶ່ງ ທ່ານມະຫາກັດຈານະເປັນຜູ້ທີ່ພຣະສາດສະດາຊົງຍົກຍ້ອງ ທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ແລະ ທ່ານມະຫາກັດຈານະກໍສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ຂໍທ່ານມະຫາກັດຈານະບໍ່ຕ້ອງໜັກໃຈ ຈົ່ງຊີ້ແຈ່ງໃຫ້ພວກເຮົາຮູ້ດ້ວຍເທີ້ນ"

## ພຣະມະຫາກັດຈານະອະທິບາຍອຸດເທດ

ທ່ານພຣະມະຫາກັດຈານະກ່າວວ່າ "ທ່ານຜູ້ມີອາຍຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານ

ທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້າພະເຈົ້າຈັກກ່າວ" ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະມະຫາກັດຈານະຈຶ່ງໄດ້ກ່າວ ວ່າ

[໔໐໔] "ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໄວ້ໂດຍຫຍໍ້ວ່າ "ພິກຂຸ ແງ່ມຸມຕ່າງ ໆ ແຫ່ງປະປັນຈະສັນຍາຍ່ອມຄອບງຳບຸຣຸດຍ້ອນເຫດໃດ ຖ້າສິ່ງທີ່ບຸກຄົນຈະເພິ່ງຍິນດີ ຈະເພິ່ງຍອມຮັບ ຈະເພິ່ງຍຶດຖື ບໍ່ມີຍ້ອນເຫດນັ້ນ ຂໍ້ນີ້ເປັນທີ່ສຸດແຫ່ງຣາຄານຸໄສ ໗ລ໗ ບາບອະກຸສົນທຳເຫຼົ່ານີ້ຍ່ອມດັບໄປໂດຍບໍ່ເຫຼືອໃນຍ້ອນເຫດນັ້ນ" ແລ້ວບໍ່ຊົງຊີ້ແຈ່ງເນື້ອ

ຄວາມໃຫ້ພິດສະດານ ຊົງລຸກຂຶ້ນຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ຂ້າພະເຈົ້າຮູ້ທົ່ວເຖິງເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໄວ້ໂດຍພິດສະດານໃຫ້ພິດສະດານໄດ້ຢ່າງນີ້

ຈັກຂຸວິນຍານເກີດຂຶ້ນຍ້ອນອາໄສຈັກຂຸ ແລະ ຣູປາຣົມ ຄວາມພໍດີກັນແຫ່ງທຳທັງ ໓ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ບຸກຄົນສະເຫວີຍອາລົມໃດ ຍ່ອມໝາຍຮູ້ອາລົມນັ້ນ ບຸກຄົນໝາຍຮູ້ອາລົມໃດຍ່ອມນຶກອາລົມນັ້ນ ບຸກຄົນນຶກອາລົມໃດຍ່ອມຄິດປຸງແຕ່ງອາລົມນັ້ນ ບຸກຄົນຄິດປຸງແຕ່ງອາລົມໃດ ຍ້ອນຄວາມຄິດ ປຸງແຕ່ງອາລົມນັ້ນເປັນເຫດ ແງ່ຕ່າງ ໆ ແຫ່ງປະປັນຈະສັນຍາຍ່ອມຄອບງຳບຸຣຸດ ໃນຣູບທັງຫຼາຍທີ່ຈະຮູ້ແຈ້ງທາງຕາທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ

ໂສຕະວິນຍານເກີດຂຶ້ນຍ້ອນອາໄສໂສຕະ ແລະ ສັດທາຣົມ ຯລຯ
ຄານະວິນຍານເກີດຂຶ້ນຍ້ອນອາໄສຄານະ ແລະ ຄັນທາຣົມ ຯລຯ
ຊິວຫາວິນຍານເກີດຂຶ້ນຍ້ອນອາໄສຊິວຫາ ແລະ ຣະສາຣົມ ຯລຯ
ກາຍວິນຍານເກີດຂຶ້ນຍ້ອນອາໄສກາຍ ແລະ ໂຜຕທັພພາຣົມ ຯລຯ

ມະໂນວິນຍານເກີດຂຶ້ນຍ້ອນອາໄສມະໂນ ແລະ ທຳມາຣົມ ຄວາມພໍດີກັນແຫ່ງທຳທັງ ໓ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ບຸກຄົນສະເຫວີຍອາລົມ ໃດຍ່ອມໝາຍຮູ້ອາລົມນັ້ນ ບຸກຄົນໝາຍຮູ້ອາລົມໃດຍ່ອມນຶກອາລົມນັ້ນ ບຸກຄົນນຶກອາລົມໃດຍ່ອມຄິດປຸງແຕ່ງອາລົມນັ້ນ ບຸກຄົນຄິດປຸງແຕ່ງອາລົມໃດ ຍ້ອນຄວາມຄິດປຸງແຕ່ງອາລົມນັ້ນເປັນເຫດ ແງ່ຕ່າງ ໆ ແຫ່ງປະປັນຈະສັນຍາຍ່ອມຄອບງຳບຸຣຸດໃນທຳມາຣົມທັງຫຼາຍທີ່ຈະຮູ້ແຈ້ງທາງໃຈ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ

ເມື່ອມີຈັກຂຸ ມີຣູປາຣົມ ແລະ ມີຈັກຂຸວິນຍານ ເປັນໄປໄດ້ທີ່ເຂົາຈັກບັນຍັດຜັດສະ ເມື່ອມີການບັນຍັດຜັດສະ ເປັນໄປໄດ້ທີ່ເຂົາຈັກບັນຍັດເວທະນາ ເມື່ອມີການບັນຍັດເວທະນາ ເປັນໄປໄດ້ທີ່ເຂົາຈັກບັນຍັດສັນຍາ ເມື່ອມີການບັນຍັດສັນຍາ ເປັນໄປໄດ້ທີ່ເຂົາຈັກບັນຍັດວິຕົກ ເມື່ອມີການບັນຍັດວິຕົກ ເປັນໄປໄດ້ທີ່ເຂົາຈັກບັນຍັດການຄອບງຳໂດຍແງ່ຕ່າງ ໆ ແຫ່ງປະປັນຈະສັນຍາ

ເມື່ອມີໂສຕະ ມີສັດທາຣົມ ຯລຯ
ເມື່ອມີຄານະ ມີຄັນທາຣົມ ຯລຯ
ເມື່ອມີຊິວຫາ ມີຣະສາຣົມ ຯລຯ
ເມື່ອມີກາຍ ມີໂຜດຖັບພາຣົມ ຯລຯ

ເມື່ອມີມະໂນ ມີທຳມາຣົມ ແລະ ມີມະໂນວິນຍານ ເປັນໄປໄດ້ທີ່ເຂົາຈັກບັນຍັດຜັດສະ ເມື່ອມີການບັນຍັດຜັດສະ ເປັນໄປໄດ້ທີ່ເຂົາຈັກບັນຍັດເວທະນາ ເມື່ອມີການບັນຍັດເວທະນາ ເປັນໄປໄດ້ທີ່ເຂົາຈັກບັນຍັດສັນຍາ ເມື່ອມີການບັນຍັດສັນຍາ ເປັນໄປໄດ້ທີ່ເຂົາຈັກບັນຍັດວິຕົກ ເມື່ອມີການບັນຍັດວິຕົກ ເປັນໄປໄດ້ທີ່ເຂົາຈັກບັນຍັດການຄອບງຳໂດຍແງ່ຕ່າງ ໆ ແຫ່ງປະປັນຈະສັນຍາ

ເມື່ອບໍ່ມີຈັກຂຸ ບໍ່ມີຣູປາຣົມ ບໍ່ມີຈັກຂຸວິນຍານ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດຜັດສະ ເມື່ອບໍ່ມີການບັນຍັດຜັດສະ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດເວທະນາ ເມື່ອບໍ່ມີການບັນຍັດເວທະນາ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດສັນຍາ ເມື່ອບໍ່ມີການບັນຍັດສັນຍາ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດວິຕົກ ເມື່ອບໍ່ມີການບັນຍັດວິຕົກ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດການຄອບງຳໂດຍແງ່ຕ່າງ ໆ ແຫ່ງປະປັນຈະສັນຍາ

ເມື່ອບໍ່ມີໂສຕະ ບໍ່ມີສັດທາຣົມ ຯລຯ
ເມື່ອບໍ່ມີຄານະ ບໍ່ມີຄັນທາຣົມ ຯລຯ
ເມື່ອບໍ່ມີຊິວຫາ ບໍ່ມີຣະສາຣົມ ຯລຯ
ເມື່ອບໍ່ມີກາຍ ບໍ່ມີໂຜດຖັບພາຣົມ ຯລຯ

ເມື່ອບໍ່ມີມະໂນ ບໍ່ມີທຳມາຣົມ ບໍ່ມີມະໂນວິນຍານ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດຜັດສະ ເມື່ອບໍ່ມີການບັນຍັດຜັດສະ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດເວທະນາ ເມື່ອບໍ່ມີການບັນຍັດເວທະນາ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດສັນຍາ ເມື່ອບໍ່ມີການບັນຍັດສັນຍາ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດວິຕົກ ເມື່ອບໍ່ມີການບັນຍັດວິຕົກ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກບັນຍັດການຄອບງຳໂດຍແງ່ຕ່າງ ໆ ແຫ່ງປະປັນຈະສັນຍາ

ທ່ານຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງອຸດເທດແກ່ພວກເຮົາໂດຍຫຍໍ້ວ່າ "ພິກຂຸ ແງ່ຕ່າງ ໆ ແຫ່ງປະປັນຈະສັນຍາຍ່ອມຄອບງຳບຸຣຸດຍ້ອນເຫດໃດ ຖ້າສິ່ງທີ່ບຸກຄົນຈະ ເພິ່ງຍິນດີ ຈະເພິ່ງຍອມຮັບ ຈະເພິ່ງຢຶດຖື ບໍ່ມີຍ້ອນເຫດນັ້ນ ຂໍ້ນີ້ ເປັນທີ່ສຸດແຫ່ງຣາຄານຸໄສ ຯລຯ ບາບອະກຸສົນທຳເຫຼົ່ານີ້ຍ່ອມດັບໄປໂດຍບໍ່ເຫຼືອຍ້ອນເຫດນັ້ນ" ແລ້ວ ບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານ ຊົງລຸກຂຶ້ນຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ຂ້າພະເຈົ້າຮູ້ທົ່ວເຖິງເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ຢ່າງນີ້ ເມື່ອທ່ານປາຖະໜາຄວນພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ແລ້ວທູນຖາມເນື້ອຄວາມນັ້ນເທີ້ນ ພຣະອົງຊົງຕອບແນວໃດ ທ່ານທັງຫຼາຍຄວນຊົງຈຳເນື້ອຄວາມນັ້ນໄວ້ຢ່າງນັ້ນ"

[໔໐໕] ຄັ້ງນັ້ນ ພິກຂຸເຫຼົ່ານັ້ນຊົມຊື່ນຍິນດີພາສິດຂອງທ່ານພຣະມະຫາກັດຈານະ ແລ້ວ

ລຸກຈາກອາສະນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດແກ່ຂ້າພຣະອົງທັງຫຼາຍໂດຍຫຍໍ້ວ່າ "ພິກຂຸ ແງ່ຕ່າງ ໆ ແຫ່ງປະປັນຈະສັນຍາຍ່ອມຄອບງຳບຸຣຸດຍ້ອນເຫດໃດ ຖ້າສິ່ງທີ່ບຸກຄົນຈະເພິ່ງຍິນດີ ຈະເພິ່ງຍອມຮັບ ຈະເພິ່ງຍຶດຖື ບໍ່ມີຍ້ອນເຫດນັ້ນ ຂໍ້ນີ້ ເປັນທີ່ສຸດແຫ່ງຣາຄານຸໄສ ຯລຯ ບາບອະກຸສົນທຳເຫຼົ່ານີ້ຍ່ອມດັບໄປໂດຍບໍ່ເຫຼືອຍ້ອນເຫດນັ້ນ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໃຫ້ພິດສະດານ ຊົງລຸກຂຶ້ນຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ຂ້າພຣະອົງທັງຫຼາຍ ໄດ້ເກີດຄວາມສົງໄສກັນວ່າ "ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດແກ່ພວກເຮົາໂດຍຫຍໍ້ວ່າ "ພິກຂຸ ແງ່ຕ່າງ ໆ ແຫ່ງປະປັນຈະສັນຍາ ຍ່ອມຄອບງຳບຸຣຸດຍ້ອນເຫດໃດ ຖ້າສິ່ງທີ່ບຸກຄົນ ຈະເພິ່ງຍິນດີ ຈະເພິ່ງຍອມຮັບ ຈະເພິ່ງຍຶດຖື ບໍ່ມີຍ້ອນເຫດນັ້ນ ຂໍ້ນີ້ເປັນທີ່ສຸດແຫ່ງຣາຄານຸໄສ ເປັນທີ່ສຸດແຫ່ງປະຕິຄານຸໄສ ເປັນທີ່ສຸດແຫ່ງວິຈິກິດສານຸໄສ ເປັນທີ່ສຸດແຫ່ງມານານຸໄສ ເປັນທີ່ສຸດແຫ່ງພະວະຣາຄານຸໄສ ເປັນທີ່ສຸດແຫ່ງອະວິດຊານຸໄສ ແລະ ເປັນທີ່ສຸດແຫ່ງການຖືໄມ້ຄ້ອນ ການຖື ອາວຸດ ການຜິດຖຽງ ການແກ່ງແຍ່ງ ການຜິດຖຽງ ການສັບສໍ່ຍຸຍົງ ແລະ ການກ່າວຕົວະ ບາບອະກຸສົນທຳເຫຼົ່ານີ້ຍ່ອມດັບໄປໂດຍບໍ່ເຫຼືອຍ້ອນເຫດນັ້ນ" ແລ້ວບໍ່ຊົງຊີ້ແຈ່ງເນື້ອຄວາມໂດຍພິດສະດານ ຊົງລຸກຂຶ້ນຈາກພຸດທະອາດສະເດັດເຂົ້າໄປສູ່ທີ່ປະທັບ ແລ້ວຜູ້ໃດນໍ? ຈະຄວນຊີ້ແຈ່ງເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ນີ້ ບໍ່ຊົງຊີ້ແຈ່ງໄວ້ໂດຍພິດສະດານໃຫ້ພິດສະດານໄດ້ ຂ້າພຣະອົງທັງຫຼາຍໄດ້ມີຄວາມຄິດວ່າ "ທ່ານພຣະມະຫາກັດຈານະ ນີ້ພຣະສາດສະດາຊົງຍົກຍ້ອງ ທັງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍສັນເສີນແລ້ວ ແລະ ທ່ານພຣະມະຫາກັດຈານະກໍສາມາດຈະຊີ້ແຈ່ງເນື້ອຄວາມແຫ່ງອຸດເທດ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໂດຍພິດສະດານໃຫ້ພິດສະດານໄດ້ ທາງທີ່ດີ ເຮົາທັງຫຼາຍຄວນເຂົ້າໄປຫາທ່ານພຣະມະຫາກັດຈານະຈົນເຖິງທີ່ຢູ່ ແລ້ວຄວນສອບຖາມເນື້ອຄວາມນີ້ກັບທ່ານພຣະມະຫາກັດຈານະ

ຂ້າແດ່ ພຣະອົງຜູ້ຈະເລີນ ຕໍ່ມາ ຂ້າພຣະອົງທັງຫຼາຍໄດ້ພາກັນເຂົ້າໄປຫາທ່ານພຣະມະຫາກັດຈານະເຖິງທີ່ຢູ່ ແລ້ວສອບຖາມເນື້ອຄວາມນີ້ກັບທ່ານພຣະມະຫາກັດຈານະ ທ່ານພຣະມະຫາກັດຈານະ ໄດ້ຊີ້ແຈ່ງເນື້ອຄວາມດ້ວຍອາການເຫຼົ່ານີ້ ດ້ວຍບົດເຫຼົ່ານີ້ ດ້ວຍພະຍັນຊະນະເຫຼົ່ານີ້ແກ່ຂ້າພຣະອົງທັງຫຼາຍ"

## ຊົງສັນເສີນພຣະມະຫາກັດຈານະ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ມະຫາກັດຈານະເປັນບັນດິດ ພິກຂຸທັງຫຼາຍ ມະຫາກັດຈານະເປັນຜູ້ມີປັນຍາຫຼາຍ ເຖິງວ່າທ່ານທັງຫຼາຍຈະຖາມເນື້ອຄວາມນີ້ກັບເຮົາ

ເຮົາກໍຈະເພິ່ງຕອບເນື້ອຄວາມນັ້ນຢ່າງນີ້ ເໝືອນກັບທີ່ມະຫາກັດຈານະຕອບ ເລື້ອງນີ້ມີເນື້ອຄວາມດັ່ງນີ້ແລ ທ່ານທັງຫຼາຍຈົ່ງຊົງຈຳເລື້ອງນັ້ນໄວ້ຢ່າງນີ້ເທີ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນັ້ນແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດຜູ້ຖືກຄວາມຫິວ ແລະ ຄວາມອ່ອນເພຍຄອບງຳ ໄດ້ເຂົ້າໜົມຫວານ ເຂົາກິນໃນເວລາໃດ ໆ ກໍຈະເພິ່ງໄດ້ຮັບຄວາມຫວານແຊບ ໃນເວລານັ້ນ ໆ ແມ່ນສັນໃດ ພິກຂຸຜູ້ເປັນນັກຄິດ ເປັນບັນດິດກໍຄືກັນສັນນັ້ນ ພິຈາຣະນາເນື້ອຄວາມແຫ່ງທຳບັນລະຍາຍນີ້ດ້ວຍປັນຍາໃນເວລາໃດ ກໍຈະເພິ່ງໄດ້ຄວາມພໍໃຈ ແລະ ຄວາມເຫຼື້ອມໃສແຫ່ງໃຈໃນເວລານັ້ນ ໆ ຂ້າແດ່ ພຣະອົງຜູ້ຈະເລີນ ທຳບັນລະຍາຍນີ້ຊື່ຫຍັງນໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ຍ້ອນເຫດນັ້ນ ທ່ານຈົ່ງຊົງຈຳໄວ້ວ່າ ທຳບັນລະຍາຍນີ້ຊື່ ມະທຸປິນຖິກະບັນລະຍາຍ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະທຸປິນຖິກະສູດທີ ໗ ຈົບ**

# ໘. ເທວະທາວິຕັກກະສູດ

## ວ່າດ້ວຍວິຕົກ ໒ ປະເພດ

[໒໐໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກ ຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ແຕ່ກ່ອນ ເຮົາເປັນໂພທິສັດ ຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດຂຶ້ນແນວນີ້ວ່າ "ຖ້າຈັ່ງໃດແລ້ວ ເຮົາຄວນຈັດວິຕົກອອກເປັນ ໒ ປະເພດ

ພິກຂຸທັງຫຼາຍ ເຮົານັ້ນຈຶ່ງໄດ້ຈັດການວິຕົກ ພະຍາບາດວິຕົກ ແລະ ວິຫິງສາວິຕົກ ເປັນປະເພດທີ ໑ ແລະ ຈັດເນກຂຳມະວິຕົກ ອະພະຍາບາດວິຕົກ ແລະ ອະວິຫິງສາວິຕົກ ເປັນປະເພດທີ ໒

## ອະກຸສົນວິຕົກ ๖

[໔໐໗] ພິກຂຸທັງຫຼາຍ ການວິຕົກຍ່ອມເກີດຂຶ້ນແກ່ເຮົາຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະ ໃຈຢູ່ຢ່າງນີ້ ເຮົານັ້ນຍ່ອມຮູ້ຊັດແນວນີ້ວ່າ "ການວິຕົກນີ້ເກີດຂຶ້ນແກ່ເຮົາແລ້ວ" ແຕ່ການວິຕົກນັ້ນ ຍ່ອມເປັນໄປເພື່ອບຽດບຽນຕົນແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງຕົນແລະຜູ້ອື່ນແດ່ ເປັນເຫດດັບປັນຍາ ເປັນສ່ວນແຫ່ງຄວາມຄັບແຄ້ນ ບໍ່ເປັນໄປເພື່ອນິບພານ ເມື່ອເຮົາພິຈາລະນາເຫັນວ່າ "ເປັນໄປເພື່ອບຽດບຽນຕົນແດ່" ການວິຕົກ ກໍດັບສູນໄປ ເມື່ອເຮົາພິຈາລະນາເຫັນວ່າ "ເປັນໄປເພື່ອບຽດບຽນຜູ້ອື່ນແດ່" ການວິຕົກກໍດັບສູນໄປ ເມື່ອເຮົາພິຈາລະນາເຫັນວ່າ "ເປັນໄປເພື່ອບຽດບຽນທັງຕົນແລະຜູ້ອື່ນແດ່" ການວິຕົກກໍດັບສູນໄປ ເມື່ອເຮົາພິຈາລະນາເຫັນວ່າ "ເປັນເຫດດັບປັນຍາ ເປັນສ່ວນແຫ່ງຄວາມຄັບແຄ້ນ ບໍ່ເປັນໄປເພື່ອນິບພານ" ການວິຕົກກໍດັບສູນໄປ

ພິກຂຸທັງຫຼາຍ ເຮົານັ້ນຍ່ອມລະ ບັນເທົາ ເຮັດການວິຕົກທີ່ເກີດຂຶ້ນຢູ່ເປັນປະຈຳໃຫ້ໝົດສິ້ນໄປ

[໔໐໘] ພິກຂຸທັງຫຼາຍ ພະຍາບາດວິຕົກຍ່ອມເກີດຂຶ້ນແກ່ເຮົາຜູ້ບໍ່ຜະໝາດ ມີຄວາມພຽນອຸທິດກາຍແລະໃຈຢູ່ຢ່າງນີ້ ຯລຯ ວິຫິງສາວິຕົກຍ່ອມເກີດຂຶ້ນ ເຮົານັ້ນຍ່ອມຮູ້ຊັດແນວນີ້ວ່າ "ວິຫິງສາວິຕົກນີ້ເກີດຂຶ້ນແກ່ເຮົາແລ້ວ" ແຕ່ວິຫິງສາວິຕົກນັ້ນເປັນໄປເພື່ອບຽດບຽນຕົນແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງຕົນແລະຜູ້ອື່ນແດ່ ເປັນເຫດດັບປັນຍາ ເປັນສ່ວນແຫ່ງຄວາມຄັບແຄ້ນ ບໍ່ເປັນໄປເພື່ອນິບພານ ເມື່ອເຮົາພິຈາລະນາເຫັນວ່າ "ເປັນໄປເພື່ອບຽດບຽນຕົນແດ່" ວິຫິງສາວິຕົກກໍດັບສູນໄປ ເມື່ອເຮົາພິຈາລະນາເຫັນວ່າ "ເປັນໄປເພື່ອບຽດບຽນຜູ້ອື່ນແດ່" ວິຫິງສາວິຕົກກໍດັບສູນໄປ ເມື່ອເຮົາພິຈາລະນາເຫັນວ່າ "ເປັນໄປເພື່ອບຽດບຽນທັງຕົນແລະຜູ້ອື່ນແດ່" ວິຫິງສາວິຕົກກໍດັບສູນໄປ ເມື່ອເຮົາພິຈາລະນາເຫັນວ່າ "ເປັນເຫດດັບປັນຍາ ເປັນສ່ວນແຫ່ງຄວາມຄັບແຄ້ນ ບໍ່ເປັນໄປເພື່ອນິບພານ" ວິຫິງສາວິຕົກກໍດັບສູນໄປ ເຮົານັ້ນຍ່ອມລະ ບັນເທົາ ເຮັດວິຫິງສາວິຕົກທີ່ເກີດຂຶ້ນຢູ່ປະຈຳ ໆ ໃຫ້ໝົດສິ້ນໄປ

ພິກຂຸທັງຫຼາຍ ພິກຂຸຍິ່ງຮິ່ນຕອງເຖິງວິຕົກໃດ ໆ ຫຼາຍ ທ່ານກໍມີໃຈນ້ອມໄປໃນວິຕົກນັ້ນ ໆ ຖ້າທ່ານຍິ່ງຮິ່ນຕອງເຖິງການວິຕົກຫຼາຍ ທ່ານກໍລະຖິ້ມເນກຂຳມະວິຕົກ ກະທຳແຕ່ການວິຕົກໃຫ້ຫຼາຍ ຈິດຂອງທ່ານນັ້ນກໍນ້ອມໄປເພື່ອການວິຕົກ ຖ້າພິກຂຸຍິ່ງຮິ່ນຕອງເຖິງພະຍາບາດວິຕົກຫຼາຍ ຯລຯ ຖ້າພິກຂຸຍິ່ງຮິ່ນຕອງເຖິງວິຫິງສາວິຕົກຫຼາຍ ທ່ານກໍລະຖິ້ມອະວິຫິງສາວິຕົກ ກະທຳແຕ່ວິຫິງສາວິຕົກໃຫ້ຫຼາຍ ຈິດຂອງທ່ານນັ້ນກໍນ້ອມໄປເພື່ອວິຫິງສາວິຕົກ

ໃນສາຣະທະສະໄໝເດືອນທ້າຍແຫ່ງລະດູຝົນ ຄົນລ້ຽງງົວຕ້ອງຖ້າລະວັງງົວທັງຫຼາຍໃນ

ບ່ອນມີເຂົ້າກ້າໜາແໜ້ນ ເຂົາຕ້ອງຕີຕ້ອນງົວທັງຫຼາຍໄປຈາກທີ່ນັ້ນ ໆ ກັ້ນໄວ້ ຫ້າມໄວ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຄົນລ້ຽງງົວແນມເຫັນການຂ້າ ການຖືກຈອງຈຳ ການເສຍຊັບ ການຖືກຕິຕຽນ ຍ້ອນງົວທັງຫຼາຍເປັນຕົ້ນເຫດ ແມ່ນສັນໃດ ເຮົາກໍຄືກັນສັນນັ້ນ ໄດ້ເຫັນໂທດ ຄວາມຊົ່ວຊາມ ຄວາມເສົ້າໝອງແຫ່ງອະກຸສົນທຳທັງຫຼາຍ ແລະ ເຫັນອານິສົງໃນເນກຂຳມະອັນເປັນຝ່າຍຜ່ອງແຜ້ວແຫ່ງກຸສົນທຳທັງຫຼາຍ

## ກຸສົນວິຕົກ ៦

[໔໐໙] ພິກຂຸທັງຫຼາຍ ເນກຂຳມະວິຕົກຍ່ອມເກີດຂຶ້ນແກ່ເຮົາຜູ້ບໍ່ຜະໝາດ ມີຄວາມພຽນອຸທິດກາຍ ແລະ ໃຈຢູ່ຢ່າງນີ້ ເຮົານັ້ນຍ່ອມຮູ້ຊັດແນວນີ້ວ່າ "ເນກຂຳມະວິຕົກນີ້ເກີດຂຶ້ນແກ່ເຮົາແລ້ວ" ແຕ່ເນກຂຳມະວິຕົກນັ້ນ ບໍ່ເປັນໄປເພື່ອບຽດບຽນຕົນ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນ ບໍ່ເປັນໄປເພື່ອບຽດບຽນທັງຕົນແລະຜູ້ອື່ນ ເປັນເຫດເຮັດປັນຍາໃຫ້ຈະເລີນ ບໍ່ເປັນສ່ວນແຫ່ງຄວາມຄັບແຄ້ນ ເປັນໄປເພື່ອນິບພານ ຖ້າເຮົາຈະເພິ່ງຮິ່ນຕອງເຖິງເນກຂຳມະວິຕົກນັ້ນຢູ່ຕະຫຼອດຄືນ ເຮົາກໍຈັກແນມບໍ່ເຫັນໄພອັນຈະເກີດຈາກເນກຂຳມະວິຕົກນັ້ນໄດ້ເລີຍ ຫາກເຮົາຈະເພິ່ງຮິ່ນຕອງເຖິງເນກຂຳມະວິຕົກນັ້ນຢູ່ຕະຫຼອດວັນ ເຮົາກໍຈັກແນມບໍ່ເຫັນໄພອັນຈະເກີດຈາກເນກຂຳມະວິຕົກນັ້ນໄດ້ເລີຍ ຫາກເຮົາຈະຮິ່ນຕອງເຖິງເນກຂຳມະວິຕົກນັ້ນຕະຫຼອດທັງຄືນທັງວັນ ເຮົາກໍຈັກແນມບໍ່ເຫັນໄພອັນຈະເກີດຈາກເນກຂຳມະວິຕົກນັ້ນໄດ້ເລີຍ ແຕ່ເມື່ອເຮົາຮິ່ນຕອງດົນເກີນໄປ ຮ່າງກາຍກໍເມື່ອຍລ້າ ເມື່ອຮ່າງກາຍເມື່ອຍລ້າ ຈິດກໍຟຸ້ງຊ່ານ ເມື່ອຈິດຟຸ້ງຊ່ານ ຈິດກໍຫ່າງຈາກສະມາທິ

ພິກຂຸທັງຫຼາຍ ເຮົານັ້ນຕັ້ງຈິດໄວ້ໃນພາຍໃນ ເຮັດໃຫ້ສະງົບ ເຮັດໃຫ້ເກີດສະມາທິ ປະຄອງໄວ້ດ້ວຍດີ ຂໍ້ນັ້ນ ຍ້ອນເຫດໃດ? ຍ້ອນເຮົາປາຖະໜາໄວ້ວ່າ "ຈິດຂອງເຮົາຢ່າຟຸ້ງຊ່ານອີກເລີຍ"

[໔໑໐] ພິກຂຸທັງຫຼາຍ ອະພະຍາບາດວິຕົກຍ່ອມເກີດຂຶ້ນແກ່ເຮົາຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ຢ່າງນີ້ ຯລຯ ອະວິຫິງສາວິຕົກຍ່ອມເກີດຂຶ້ນ ເຮົານັ້ນຍ່ອມຮູ້ຊັດແນວນີ້ວ່າ "ອະວິຫິງສາວິຕົກນີ້ເກີດຂຶ້ນແກ່ເຮົາແລ້ວ" ແຕ່ອະວິຫິງສາວິຕົກນັ້ນບໍ່ເປັນໄປເພື່ອບຽດບຽນຕົນ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນ ບໍ່ເປັນໄປເພື່ອບຽດບຽນທັງຕົນແລະຜູ້ອື່ນ ເປັນເຫດເຮັດປັນຍາໃຫ້ຈະເລີນ ບໍ່ເປັນສ່ວນແຫ່ງຄວາມຄັບແຄ້ນ ເປັນໄປເພື່ອນິບພານ ຖ້າເຮົາຈະເພິ່ງຮິ່ນຕອງເຖິງອະວິຫິງສາວິຕົກນັ້ນຢູ່ຕະຫຼອດຄືນ ເຮົາກໍຈັກແນມບໍ່ເຫັນໄພອັນຈະເກີດຈາກອະວິຫິງສາວິຕົກນັ້ນໄດ້ເລີຍ ຫາກເຮົາຈະເພິ່ງຮິ່ນຕອງເຖິງອະວິຫິງສາວິຕົກ ນັ້ນຢູ່ຕະຫຼອດວັນ ເຮົາກໍຈັກແນມບໍ່ເຫັນໄພອັນຈະເກີດຈາກອະວິຫິງສາວິຕົກນັ້ນໄດ້ເລີຍ ຫາກເຮົາຈະເພິ່ງຮິ່ນຕອງເຖິງອະວິຫິງສາວິຕົກນັ້ນຕະຫຼອດທັງຄືນທັງວັນ ເຮົາກໍຈັກແນມບໍ່ເຫັນໄພອັນຈະເກີດຈາກອະວິຫິງສາວິຕົກນັ້ນໄດ້ເລີຍ ແຕ່ເມື່ອເຮົາຮິ່ນຕອງຢູ່ດົນເກີນໄປ ຮ່າງກາຍກໍເມື່ອຍລ້າ ເມື່ອຮ່າງກາຍເມື່ອຍລ້າ ຈິດກໍຟຸ້ງຊ່ານ ເມື່ອຈິດຟຸ້ງຊ່ານ ຈິດກໍຫ່າງຈາກສະມາທິ ເຮົານັ້ນຕັ້ງຈິດໄວ້ໃນພາຍໃນ ເຮັດໃຫ້ສະງົບ ເຮັດໃຫ້

ເກີດສະມາທິ ປະຄອງໄວ້ດ້ວຍດີ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາປາຖະໜາໄວ້ວ່າ "ຈິດຂອງເຮົາຢ່າຟຸ້ງຊ່ານອີກເລີຍ"

ພິກຂຸທັງຫຼາຍ ພິກຂຸຍິ່ງຮິ່ນຕອງເຖິງວິຕົກໃດ ໆ ຫຼາຍ ທ່ານກໍມີໃຈນ້ອມໄປໃນວິຕົກນັ້ນ ໆ ຫຼາຍ ຖ້າພິກຂຸຍິ່ງຮິ່ນຕອງເຖິງເນກຂໍາມະວິຕົກຫຼາຍ ທ່ານກໍຈະລະກາມວິຕົກໄດ້ເຮັດເນກຂໍາມະວິຕົກຢ່າງດຽວໃຫ້ຫຼາຍ ຈິດຂອງທ່ານນັ້ນ ກໍຈະນ້ອມໄປເພື່ອເນກຂໍາມະວິຕົກ ຖ້າພິກຂຸຍິ່ງຮິ່ນຕອງເຖິງອະພະຍາບາດວິຕົກຫຼາຍ ຯລຯ ຖ້າພິກຂຸຍິ່ງຮິ່ນຕອງເຖິງອະວິຫິງສາວິຕົກ ຫຼາຍທ່ານກໍຈະລະວິຫິງສາວິຕົກໄດ້ ເຮັດອະວິຫິງສາວິຕົກຢ່າງດຽວໃຫ້ຫຼາຍ ຈິດຂອງທ່ານນັ້ນກໍຈະນ້ອມໄປເພື່ອອະວິຫິງສາວິຕົກ

ໃນເດືອນທ້າຍແຫ່ງລະດູຮ້ອນ ຄົນລ້ຽງງົວຕ້ອງຖ້າລະວັງ ງົວທັງຫຼາຍໃນບ່ອນໃກ້ເຮືອນທຸກ ໆ ດ້ານ ເມື່ອເຂົາໄປສູ່ໂຄນຕົ້ນໄມ້ຫຼືກາງແຈ້ງ ຈະຕ້ອງຕັ້ງສະຕິໄວ້ຢູ່ສະເໝີວ່າ "ນັ້ນຝູງງົວ" ແມ່ນສັນໃດ ເຮົາກໍຄືກັນສັນນັ້ນ ຕ້ອງຕັ້ງສະຕິໄວ້ຢູ່ສະເໝີວ່າ "ເຫຼົ່ານີ້ເປັນທໍາ (ຄືກຸສົນວິຕົກ)"

[໔໑໑] ພິກຂຸທັງຫຼາຍ ເຮົາໄດ້ຜາຣົບຄວາມພຽນ ມີຄວາມພຽນບໍ່ຫຍ່ອນຍານແລ້ວ ມີສະຕິໝັ້ນຄົງ ບໍ່ເລີເລືອນ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດຕັ້ງໝັ້ນ ມີອາລົມ ເປັນໜຶ່ງ ເຮົານັ້ນສະຫງັດຈາກກາມແລະອະກຸສົນທໍາທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ເຮົາບັນລຸທຸຕິຍະຊານ ທີ່ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ເຮົາມີອຸເປກຂາ ມີສະຕິສໍາປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ເຮົາບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ແລະ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

## ວິດຊາ ၁

[໔໑໔] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ໔ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ເຮົານັ້ນ ນ້ອມຈິດໄປເພື່ອປຸພເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດແດ່ ຯລຯ ເຮົານັ້ນຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດຢ່າງນີ້ ເຮົາບັນລຸວິດຊາທີ່ ໑ ນີ້ໃນປະຖົມຍາມແຫ່ງຣາຕີ ກໍາຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນກໍາຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ເໝືອນບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນອຸທິດກາຍແລະໃຈຢູ່ສັນນັ້ນ

[໔໑໓] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກ ຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ເຮົານັ້ນນ້ອມ ຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດດ້ວຍຕາທິບອັນບໍລິສຸດ ເໜືອມະນຸດ ຯລຯ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍ ທຸຈະຣິຕ ຯລຯ ເຮົາເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳຢ່າງນີ້ແລ້ວ ເຮົາບັນລຸວິດຊາທີ ໒ ນີ້ໃນມັດຊິມະຍາມແຫ່ງຣາຕີ ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ເໝືອນບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ສັນນັ້ນ

[໔໑໔] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກ ຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ເຮົານັ້ນໄດ້ ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣທະ ນີ້ອາສະວະນິໂຣທະຄາມິນີປະຕິປະທາ" ເມື່ອເຮົາຮູ້ເຫັນຢ່າງນີ້ ຈິດຈຶ່ງລຸດພົ້ນຈາກກາມາສະຫວະແດ່ ຈິດຈຶ່ງລຸດພົ້ນຈາກພະວາສະວະແດ່ ຈິດຈຶ່ງລຸດພົ້ນຈາກອະວິດຊາສະຫວະແດ່ ເມື່ອຈິດລຸດພົ້ນ ແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ" ເຮົາບັນລຸວິດຊາທີ່ ໓ ນີ້ໃນປັດສິມຍາມແຫ່ງຣາຕີ ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ເໝືອນບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ສັນນັ້ນ

## ຊົງຊີ້ທາງຜິດແລະທາງຖືກ

[໔໑໕] ພິກຂຸທັງຫຼາຍ ປຽບເໝືອນມີຊີ້ນຝູງໃຫຍ່ພາກັນເຂົ້າໄປອາໄສໜອງໃຫຍ່ໃນປ່າດົງ ມີຊາຍຄົນໜຶ່ງຜູ້ປາຖະໜາຄວາມພິນາດ ບໍ່ຕ້ອງການຈະເກື້ອກູນ ບໍ່ປະສົງຄວາມປອດໄພແກ່ໝູ່ເນື້ອນັ້ນ ເຂົາອັດທາງທີ່ປອດໄພ ມີປົກກະຕິປອດໄພໄປໄດ້ຕາມຄວາມພໍໃຈຂອງໝູ່ເນື້ອນັ້ນ ໄຂທາງທີ່ບໍ່ສະດວກ ມັດຊີ້ນຕໍ່ຕົວຜູ້ ຊຸ່ມນາງຊີ້ນຕໍ່ໄວ້

ເມື່ອເປັນແນວນີ້ ສະໄໝຕໍ່ມາ ເນື້ອຝູງໃຫຍ່ກໍຕ້ອງມາຕາຍເຫຼືອຈຳນວນໜ້ອຍ ແຕ່ຍັງມີຊາຍຄົນໜຶ່ງຜູ້ປາຖະໜາປະໂຫຍດ ຕ້ອງການຈະເກື້ອກູນ ປະສົງຄວາມປອດໄພແກ່ໝູ່ເນື້ອນັ້ນ ເຂົາໄຂທາງທີ່ປອດໄພ ມີປົກກະຕິປອດໄພໄປໄດ້ຕາມຄວາມພໍໃຈຂອງໝູ່ເນື້ອນັ້ນ ອັດທາງທີ່ບໍ່ສະດວກ ກຳຈັດຊີ້ນຕໍ່ຕົວຜູ້ ທຳລາຍນາງຊີ້ນຕໍ່ແລ້ວ ເມື່ອເປັນແນວນີ້ ສະໄໝຕໍ່ມາ ເນື້ອຝູງໃຫຍ່ກໍຕ້ອງມີຈຳນວນຫຼາຍຂຶ້ນ ຄັບຄັ່ງ ລົ້ນຫລາມ ແມ່ນສັນໃດ ຂໍ້ອຸປະມານີ້ກໍສັນນັ້ນ ເຮົາໄດ້ເຮັດຂຶ້ນກໍເພື່ອຈະໃຫ້ທ່ານທັງຫຼາຍຮູ້ຄວາມໝາຍຂອງເນື້ອຄວາມໃນອຸປະມານັ້ນ ມີອະທິບາຍດັ່ງຕໍ່ໄປນີ້

ຄຳວ່າ ໜອງໃຫຍ່ ນີ້ ເປັນຊື່ແຫ່ງກາມທັງຫຼາຍ
ຄຳວ່າ ເນື້ອຝູງໃຫຍ່ ນີ້ ເປັນຊື່ຂອງໝູ່ສັດທັງຫຼາຍ
ຄຳວ່າ ຊາຍຜູ້ປາຖະໜາຄວາມພິນາດ ບໍ່ຕ້ອງການຈະເກື້ອກູນ ບໍ່ປະສົງຄວາມປອດໄພ ນີ້ ເປັນຊື່ຂອງມານໃຈບາບ
ຄຳວ່າ ທາງທີ່ບໍ່ສະດວກ ນີ້ ເປັນຊື່ຂອງມິດສາມັກ (ທາງຜິດ) ມີອົງ ໘ ຄື

| | | | | | |
|---|---|---|---|---|---|
| ໑. | ມິດສາທິດຖິ | (ເຫັນຜິດ) | ໒. | ມິດສາສັງກັບປະ | (ດຳຣິຜິດ) |
| ໓. | ມິດສາວາຈາ | (ເຈລະຈາຜິດ) | ໔. | ມິດສາກຳມັນຕະ | (ກະທຳຜິດ) |
| ໕. | ມິດສາອາຊີວະ | (ລ້ຽງຊີບຜິດ) | ໖. | ມິດສາວາຍາມະ | (ພະຍາຍາມຜິດ) |
| ໗. | ມິດສາສະຕິ | (ຣະນຶກຜິດ) | ໘. | ມິດສາສະມາທິ | (ຕັ້ງຈິດໝັ້ນຜິດ) |

ຄຳວ່າ ຊີ້ນຕໍ່ຕົວຜູ້ ນີ້ ເປັນຊື່ແຫ່ງຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ
ຄຳວ່າ ນາງຊີ້ນຕໍ່ ນີ້ ເປັນຊື່ຂອງອະວິດຊາ
ຄຳວ່າ ຊາຍຜູ້ປາຖະໜາປະໂຫຍດ ຕ້ອງການຈະເກື້ອກູນ ປະສົງຄວາມປອດໄພ ນີ້ເປັນຊື່ຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ
ຄຳວ່າ ທາງທີ່ປອດໄພ ມີຄວາມໂດຍປອດໄພ ໄປໄດ້ຕາມພໍໃຈ ນີ້ ເປັນຊື່ຂອງອະຣິຍະມັກມີອົງ ໘ ຄື

| | | | |
|---|---|---|---|
| ໑. | ສຳມາທິດຖິ | ໒. | ສຳມາສັງກັບປະ |
| ໓. | ສຳມາວາຈາ | ໔. | ສຳມາກຳມັນຕະ |
| ໕. | ສຳມາອາຊີວະ | ໖. | ສຳມາວາຍາມະ |
| ໗. | ສຳມາສະຕິ | ໘. | ສຳມາສະມາທິ |

ພິກຂຸທັງຫຼາຍ ດ້ວຍປະການດັ່ງກ່າວມາແລ້ວນີ້ ເຮົາໄດ້ໄຂທາງທີ່ປອດໄພ ມີປີກະຕິປອດໄພທີ່ພວກທ່ານຄວນດຳເນີນໄປໄດ້ຕາມໃຈມັກໃຫ້ແລ້ວ ແລະ ອັດທາງທີ່ບໍ່ສະດວກໃຫ້ດ້ວຍກຳຈັດຊີ້ນຕໍ່ຕົວຜູ້ໃຫ້ແລ້ວ ແລະທຳລາຍນາງຊີ້ນຕໍ່ໃຫ້ແລ້ວ ກິດໃດທີ່ສາດສະດາຜູ້ຫວັງປະໂຫຍດເກື້ອກູນ ເອື້ອເຟື້ອ ອາໄສຄວາມອະນຸເຄາະຈະເພິ່ງກະທຳແກ່ສາວົກທັງຫຼາຍ ກິດນັ້ນຕະຖາຄົດກໍໄດ້ເຮັດແກ່ທ່ານທັງຫຼາຍແລ້ວ ນັ້ນໂຄນໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍ ຈົ່ງເພ່ງພິນິດ ຢ່າຜະໝາດ ຢ່າໄດ້ມີຄວາມເດືອດຮ້ອນໃນພາຍຫຼັງ ນີ້ເປັນຄຳສັ່ງສອນຂອງເຮົາຕະຖາຄົດສຳລັບທ່ານທັງຫຼາຍ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ເທວະທາວິຕັກກະສູດທີ ໙ ຈົບ**

# ໑໐. ວິຕັກກະສັນຖານະສູຕ

## ວ່າດ້ວຍສັນຖານແຫ່ງວິຕົກ

[໘໑໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

## ອຸບາຍກຳຈັດອະກຸສົນວິຕົກ

"ພິກຂຸທັງຫຼາຍ ພິກຂຸຜູ້ຂົນຂວາຍໃນອະທິຈິດ ຄວນມະນະສິການເຖິງນິມິດ ໕ ປະການນີ້ຕາມເວລາອັນສົມຄວນ

ນິມິດ ໕ ປະການ ອັນໃດແນ ຄື

໑. ເມື່ອພິກຂຸໃນທຳວິໄນນີ້ອາໄສນິມິດໃດແລ້ວ ມະນະສິການນິມິດໃດຢູ່ ວິຕົກ ທັງຫຼາຍອັນເປັນບາບອະກຸສົນ ເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ ຍ່ອມເກີດຂຶ້ນ ພິກຂຸນັ້ນ ຄວນມະນະສິການນິມິດອື່ນເຊິ່ງປະກອບດ້ວຍກຸສົນນອກຈາກນິມິດນັ້ນ ເມື່ອທ່ານມະນະສິການນິມິດອື່ນເຊິ່ງປະກອບດ້ວຍກຸສົນນອກຈາກນິມິດນັ້ນ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນ ເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນ ຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່ ປຽບເໝືອນ ຊ່າງໄມ້ຫຼືລູກມືຂອງຊ່າງໄມ້ ຜູ້ຊ່ຽວຊານ ໃຊ້ລີ່ມອັນນ້ອຍຕອກດັນຖອນຫຼີ້ມອັນໃຫຍ່ອອກໄດ້ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອອາໄສນິມິດໃດແລ້ວມະນະສິການນິມິດໃດ ວິຕົກທັງຫຼາຍອັນເປັນບາບອະກຸສົນ ເຊິ່ງປະກອບດ້ວຍສັນທະແດ່ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ ເກີດຂຶ້ນ ພິກຂຸນັ້ນຄວນມະນະສິການນິມິດອື່ນເຊິ່ງປະກອບດ້ວຍກຸສົນນອກຈາກນິມິດນັ້ນ ເມື່ອທ່ານມະນະສິການນິມິດອື່ນ ເຊິ່ງປະກອບດ້ວຍກຸສົນນອກຈາກນິມິດນັ້ນ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນ ເຊິ່ງປະກອບດ້ວຍສັນທະແດ່ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນ ຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່

[໔໑໗] ພິກຂຸທັງຫຼາຍ

໔. ຫາກເມື່ອພິກຂຸນັ້ນ ມະນະສິການນິມິດອື່ນເຊິ່ງປະກອບດ້ວຍກຸສົນນອກຈາກນິມິດນັ້ນ ວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ ຍັງເກີດຂຶ້ນອີກ ພິກຂຸນັ້ນ ຄວນພິຈາລະນາໂທດແຫ່ງວິຕົກເຫຼົ່ານັ້ນວ່າ "ວິຕົກເຫຼົ່ານີ້ລ້ວນແຕ່ເປັນອະກຸສົນແມ່ນຢ່າງນີ້ ວິຕົກເຫຼົ່ານີ້ລ້ວນແຕ່ມີໂທດແມ່ນຢ່າງນີ້ ວິຕົກເຫຼົ່ານີ້ລ້ວນແຕ່ມີທຸກເປັນວິບາກແມ່ນຢ່າງນີ້" ເມື່ອທ່ານພິຈາລະນາໂທດແຫ່ງວິຕົກເຫຼົ່ານັ້ນຢູ່ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະຫງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນ ປຽບເໝືອນ ຍິງສາວຫຼືຊາຍໜຸ່ມທີ່ມັກແຕ່ງຕົວ ມີຜູ້ນຳຊາກງູ ຊາກໝາ ຫຼື ຊາກສົບມະນຸດມາມັດໄວ້ຢູ່ຄໍ ຍ່ອມຮູ້ສຶກອຶດອັດ ຣະອາ ແລະ ລັງກຽດ ແມ່ນສັນໃດ ພິກຂຸນັ້ນ ກໍຄືກັນສັນນັ້ນ ຫາກເມື່ອມະນະສິການນິມິດອື່ນ ເຊິ່ງປະກອບດ້ວຍກຸສົນນອກຈາກນິມິດນັ້ນ ວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ ຍັງເກີດຂຶ້ນອີກ ພິກຂຸນັ້ນ ຄວນພິຈາລະນາໂທດແຫ່ງວິຕົກເຫຼົ່ານັ້ນວ່າ "ວິຕົກເຫຼົ່ານີ້ລ້ວນແຕ່ເປັນອະກຸສົນແມ່ນຢ່າງນີ້ ວິຕົກເຫຼົ່ານີ້ລ້ວນແຕ່ມີໂທດແມ່ນຢ່າງນີ້ ວິຕົກເຫຼົ່ານີ້ລ້ວນແຕ່ມີທຸກເປັນວິບາກແມ່ນຢ່າງນີ້" ເມື່ອທ່ານພິຈາລະນາໂທດແຫ່ງວິຕົກເຫຼົ່ານັ້ນຢູ່ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະຫງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່

[໔໑໘] ພິກຂຸທັງຫຼາຍ

໕. ຫາກເມື່ອພິກຂຸນັ້ນ ພິຈາລະນາໂທດແຫ່ງວິຕົກເຫຼົ່ານັ້ນຢູ່ ວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ ຍັງເກີດຂຶ້ນອີກ ພິກຂຸນັ້ນ ບໍ່ຄວນຣະນຶກເຖິງ ບໍ່ຄວນມະນະສິການວິຕົກເຫຼົ່ານັ້ນ ເມື່ອທ່ານບໍ່ຣະນຶກເຖິງ ບໍ່ມະນະສິການວິຕົກເຫຼົ່ານັ້ນຢູ່ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະຫງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່ ຄົນມີຕາດີບໍ່ຕ້ອງການທີ່ຈະເຫັນຮູບທີ່ຜ່ານມາ ເຂົາຄວນຫຼັບຕາຫຼືຫລຽວໄປທາງອື່ນເສຍ ແມ່ນສັນໃດ ພິກຂຸນັ້ນກໍຄືກັນສັນນັ້ນ ຫາກເມື່ອພິຈາລະນາໂທດແຫ່ງວິຕົກເຫຼົ່ານັ້ນຢູ່ ວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ຍັງເກີດຂຶ້ນອີກນັ້ນແລ ຯລຯ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່

[໔໑໗] ພິກຂຸທັງຫຼາຍ

໔. ຫາກເມື່ອພິກຂຸນັ້ນບໍ່ຣະນຶກເຖິງ ບໍ່ມະນະສິການວິຕົກເຫຼົ່ານັ້ນ ວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ ຍັງເກີດຂຶ້ນອີກ ພິກຂຸນັ້ນ ຄວນມະນະສິການວິຕັກກະສັງຂານສັນຖານແຫ່ງວິຕົກເຫຼົ່ານັ້ນ ເມື່ອທ່ານມະນະສິການວິຕັກກະສັງຂານສັນຖານແຫ່ງວິຕົກເຫຼົ່ານັ້ນ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່

ປຽບເໝືອນ ຄົນຍ່າງໄວ ເຂົາຈະເພິ່ງມີຄວາມຄິດແນວນີ້ວ່າ "ເຮົາຈະຟ້າວຍ່າງເຮັດຫຍັງ ເຮົາຄວນ ຄ່ອຍ ໆ ຍ່າງ" ເຂົາກໍຄ່ອຍ ໆ ຍ່າງ ເຂົາຈະເພິ່ງມີຄວາມຄິດແນວນີ້ວ່າ "ເຮົາຈະຄ່ອຍ ໆ ຍ່າງເຮັດຫຍັງ ເຮົາຄວນຢືນ" ເຂົາກໍຢືນ ເຂົາຈະ ເພິ່ງມີຄວາມຄິດຢ່າງນີ້ອີກວ່າ "ເຮົາຈະຢືນຢູ່ເຮັດຫຍັງ ເຮົາຄວນນັ່ງ" ເຂົາຈຶ່ງນັ່ງ ເຂົາຈະເພິ່ງມີຄວາມຄິດຢ່າງນີ້ອີກວ່າ "ເຮົາຈະນັ່ງຢູ່ເຮັດຫຍັງ ເຮົາຄວນນອນ" ເຂົາກໍນອນ ຄົນຜູ້ນັ້ນເວັ້ນອິລິຍາບົດຫຍາບ ໆ ແລ້ວເພິ່ງໃຊ້ອິລິຍາບົດລະອຽດ ໆ ແມ່ນສັນໃດ ພິກຂຸນັ້ນ ກໍຄືກັນສັນນັ້ນ ຫາກເມື່ອບໍ່ຣະນຶກເຖິງ ບໍ່ມະນະສິການວິຕົກເຫຼົ່ານັ້ນ ວິຕົກອັນເປັນບາບອະກຸສົນ ເຊິ່ງປະກອບດ້ວຍສັນທະແດ່ ຯລຯ ຍັງເກີດຂຶ້ນອີກນັ້ນ ແລ ຯລຯ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່

[໔໘໐] ພິກຂຸທັງຫຼາຍ

໕. ຫາກເມື່ອພິກຂຸນັ້ນ ມະນະສິການເຖິງວິຕັກກະສັງຂານສັນຖານແຫ່ງວິຕົກແມ່ນເຫຼົ່ານັ້ນ ວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ ຍັງເກີດຂຶ້ນອີກ ພິກຂຸນັ້ນຄວນກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ເມື່ອທ່ານກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນ ເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່

ປຽບເໝືອນ ຄົນຜູ້ມີກຳລັງຫຼາຍຈັບຄົນຜູ້ມີກຳລັງໜ້ອຍກວ່າໄດ້ແລ້ວບີບ ກົດ ເຄັ້ນ ຢູ່ທີ່ວຄໍ ຫຼື ກ້ານຄໍໄວ້ໃຫ້ແໜ້ນ ແມ່ນສັນໃດ ພິກຂຸນັ້ນ ກໍຄືກັນສັນນັ້ນ ຫາກເມື່ອມະນະສິການເຖິງວິຕັກກະສັງຂານສັນຖານແຫ່ງວິຕົກແມ່ນເຫຼົ່ານັ້ນ ວິຕົກອັນເປັນບາບອະກຸສົນ ເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ ຍັງເກີດຂຶ້ນອີກ ພິກຂຸນັ້ນຄວນ

ກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ເມື່ອທ່ານກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່

## ຜູ້ຊ່ຽວຊານວິທີແຫ່ງວິຕົກ

[໘໘໑] ພິກຂຸທັງຫຼາຍ ເມື່ອພິກຂຸອາໄສນິມິດໃດແລ້ວ ມະນະສິການນິມິດໃດ ວິຕົກອັນເປັນບາບອະກຸສົນ ເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍ ໂມຫະແດ່ ຍ່ອມເກີດຂຶ້ນ ເມື່ອທ່ານມະນະສິການນິມິດອື່ນ ເຊິ່ງປະກອບດ້ວຍກຸສົນນອກຈາກນິມິດນັ້ນ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນ ເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່ ເມື່ອພິກຂຸນັ້ນ ພິຈາລະນາໂທດແຫ່ງວິຕົກເຫຼົ່ານັ້ນຢູ່ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່ ເມື່ອພິກຂຸນັ້ນບໍ່ຣະນຶກເຖິງ ບໍ່ມະນະສິການວິຕົກເຫຼົ່ານັ້ນ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່

ເມື່ອພິກຂຸນັ້ນ ມະນະສິການວິຕັກກະສັງຂານສັນຖານແຫ່ງວິຕົກເຫຼົ່ານັ້ນ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່ ເມື່ອພິກຂຸນັ້ນກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ທ່ານຍ່ອມລະວິຕົກອັນເປັນບາບອະກຸສົນເຊິ່ງປະກອບດ້ວຍສັນທະແດ່ ປະກອບດ້ວຍໂທສະແດ່ ປະກອບດ້ວຍໂມຫະແດ່ໄດ້ ວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນລະວິຕົກອັນເປັນບາບອະກຸສົນເຫຼົ່ານັ້ນໄດ້ ຈິດຍ່ອມຕັ້ງໝັ້ນ ສະງົບ ເປັນພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ມີສະມາທິໃນພາຍໃນຢູ່

ພິກຂຸທັງຫຼາຍ ພິກຂຸນີ້ເຮົາຮຽກວ່າ "ຜູ້ຊ່ຽວຊານໃນວິທີແຫ່ງວິຕົກ ທ່ານຫວັງວິຕົກໃດກໍຈັກນຶກເຖິງວິຕົກນັ້ນໄດ້ ບໍ່ຫວັງວິຕົກໃດກໍຈັກບໍ່ນຶກເຖິງວິຕົກນັ້ນໄດ້ ຕັດຕັນຫາໄດ້ແລ້ວ ຄາຍສັງໂຍດໄດ້ແລ້ວ ເຮັດທີ່ສຸດທຸກໄດ້ແລ້ວ ຍ້ອນລະມານະໄດ້ໂດຍຊອບ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ວິຕັກກະສັນຖານສູດທີ ໑໐ ຈົບ**

**ສີຫະນາທະວັກທີ່ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ຈູລະສີຫະນາດສູດ | ໒. ມະຫາສີຫະນາດສູດ |
| ໓. ມະຫາທຸກຂັກຂັນທະສູດ | ໔. ຈູລະທຸກຂັກຂັນທະສູດ |
| ໕. ອະນຸມານສູດ | ໖. ເຈໂຕຂີລະສູດ |
| ໗. ວະນະປັດຖະສູດ | ໘. ມະທຸປິນທິກະສູດ |
| ໙. ເທວະທາວິຕັກກະສູດ | ໑໐. ວິຕັກກະສັນຖານະສູດ |

# ๓. ໂອປໍາມະວັກ

## ໝວດວ່າດ້ວຍຂໍ້ອຸປະມາ

## ໑. ກະກະຈູປະມະສູດ

### ວ່າດ້ວຍອຸປະມາດ້ວຍເລື່ອຍ

[໒໒໒] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະໂມລິຍະຜັກຄຸນະຢູ່ຄຸກຄີກັບພິກຂຸນີທັງຫຼາຍເກີນເວລາ ທ່ານພຣະໂມລິຍະຜັກຄຸນະຢູ່ຄຸກຄີກັບພິກຂຸນີທັງຫຼາຍຢ່າງນີ້ ຖ້າພິກຂຸລາງອົງຕິຕຽນພິກຂຸນີເຫຼົ່ານັ້ນ ຕໍ່ໜ້າທ່ານພຣະໂມລິຍະຜັກຄຸນະ ທ່ານພຣະໂມລິຍະຜັກຄຸນະກໍຄຽດບໍ່ພໍໃຈພິກຂຸອົງນັ້ນຈົນວ່າ ກໍ່ອະທິກອນຂຶ້ນກໍມີ ອັນໜຶ່ງ ຖ້າພິກຂຸລາງອົງຕິຕຽນທ່ານພຣະໂມລິຍະຜັກຄຸນະຕໍ່ໜ້າພິກຂຸນີເຫຼົ່ານັ້ນ ພິກຂຸນີເຫຼົ່ານັ້ນກໍພາກັນຄຽດບໍ່ພໍໃຈພິກຂຸອົງນັ້ນຈົນວ່າ ກໍ່ອະທິກອນຂຶ້ນກໍມີ ທ່ານພຣະໂມລິຍະຜັກຄຸນະຢູ່ຄຸກຄີກັບພິກຂຸນີທັງຫຼາຍຢ່າງນີ້

ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະໂມລິຍະຜັກຄຸນະຢູ່ຄຸກຄີກັບພວກພິກຂຸນີເກີນເວລາ ທ່ານພຣະໂມລິຍະຜັກຄຸນະຢູ່ຄຸກຄີກັບພວກພິກຂຸນີຢ່າງນີ້ ຖ້າພິກຂຸລາງອົງ ຕິຕຽນພິກຂຸນີເຫຼົ່ານັ້ນຕໍ່ໜ້າທ່ານພຣະໂມລິຍະຜັກຄຸນະ ທ່ານພຣະໂມລິຍະຜັກຄຸນະກໍຄຽດບໍ່ພໍໃຈພິກຂຸອົງນັ້ນຈົນວ່າ ກໍ່ອະທິກອນຂຶ້ນກໍມີ ອັນໜຶ່ງ ຖ້າພິກຂຸລາງອົງຕິຕຽນທ່ານພຣະໂມລິຍະຜັກຄຸນະຕໍ່ໜ້າພິກຂຸນີເຫຼົ່ານັ້ນ ພິກຂຸນີເຫຼົ່ານັ້ນກໍພາກັນຄຽດບໍ່ພໍໃຈພິກຂຸອົງນັ້ນຈົນວ່າກໍ່ອະທິກອນຂຶ້ນກໍມີ ທ່ານພຣະໂມລິຍະຜັກຄຸນະຢູ່ຄຸກຄີກັບພວກພິກຂຸນີຢ່າງນີ້"

### ຊົງເຕືອນພຣະໂມລິຍະຜັກຄຸນະທີ່ໂກດ

[໒໒໓] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸອົງໜຶ່ງມາດ້ວຍຕັດ ວ່າ

"ມາເທີ້ນ ພິກຂຸ ທ່ານຈົ່ງໄປຮຽກໂມລິຍະຜັກຄຸນະພິກຂຸຕາມຄຳຂອງເຮົາ ວ່າ "ທ່ານຜັກ

ຄຸນະ ພຣະສາດສະດາຕັດຮຽກຫາທ່ານ”

ພິກຂຸອົງນັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາທ່ານພຣະໂມລິຍະຜັກຄຸນະ ເຖິງທີ່ຢູ່ແລ້ວ ໄດ້ກ່າວກັບທ່ານວ່າ “ທ່ານຜັກຄຸນະ ພຣະສາດສະດາຕັດຮຽກຫາທ່ານ”

ທ່ານພຣະໂມລິຍະຜັກຄຸນະຮັບຄຳພິກຂຸອົງນັ້ນ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງໃນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານ ໂມລິຍະຜັກຄຸນະ ວ່າ

“ຜັກຄຸນະ ແມ່ນບໍ? ທີ່ເຂົາຊາລືກັນວ່າ ທ່ານຢູ່ຄຸກຄີກັບພິກຂຸນີທັງຫຼາຍເກີນເວລາ ທ່ານ ຢູ່ຄຸກຄີກັບພິກຂຸນີທັງຫຼາຍຢ່າງນີ້ ຖ້າມີພິກຂຸລາງອົງຕິຕຽນພິກຂຸນີເຫຼົ່ານັ້ນຕໍ່ໜ້າທ່ານ ທ່ານກໍຄຽດ ບໍ່ພໍໃຈພິກຂຸອົງນັ້ນ ຈົນວ່າກໍ່ອະທິກອນຂຶ້ນກໍມີ ອັນໜຶ່ງ ຖ້າພິກຂຸລາງອົງຕິຕຽນທ່ານຕໍ່ໜ້າພິກຂຸນີ ທັງຫຼາຍ ພິກຂຸນີເຫຼົ່ານັ້ນ ກໍພາກັນໂກດ ບໍ່ພໍໃຈ ພິກຂຸອົງນັ້ນ ຈົນວ່າກໍ່ອະທິກອນຂຶ້ນກໍມີ ແມ່ນ ບໍ? ທີ່ທ່ານຢູ່ຄຸກຄີກັບພິກຂຸນີທັງຫຼາຍຢ່າງນີ້”

ທ່ານພຣະໂມລິຍະຜັກຄຸນະທູນຮັບວ່າ “ແມ່ນແລ້ວ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຖາມຕໍ່ໄປວ່າ “ທ່ານເປັນກຸນລະບຸດອອກຈາກເຮືອນບວດ ເປັນບັນພະຊິດດ້ວຍສັດທາບໍ່ແມ່ນບໍ?”

ທ່ານພຣະໂມລິຍະຜັກຄຸນະທູນວ່າ “ແມ່ນແລ້ວ ຂ້ານ້ອຍ”

[໒໒໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ “ຜັກຄຸນະ ການທີ່ທ່ານຢູ່ຄຸກຄີກັບພິກຂຸນີທັງຫຼາຍ ເກີນເວລານີ້ ບໍ່ສົມຄວນແກ່ທ່ານຜູ້ເປັນກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດດ້ວຍ ສັດທາເລີຍ ຍ້ອນແນວນັ້ນ ແມ່ນຖ້າພິກຂຸລາງອົງຈະເພິ່ງຕິຕຽນພິກຂຸນີເຫຼົ່ານັ້ນຕໍ່ໜ້າທ່ານ ແມ່ນ ໃນຂໍ້ນັ້ນ ທ່ານກໍຄວນລະສັນທະແລະວິຕົກອັນອາໄສເຮືອນ°ສາ ແມ່ນໃນຂໍ້ນັ້ນ ທ່ານຄວນຕັ້ງໃຈຮູ້ ແນວນີ້ວ່າ “ຈິດຂອງເຮົາຈັກບໍ່ແປຜັນ ເຮົາຈັກບໍ່ເປ່ງວາຈາຊົ່ວຫຍາບ ແລະ ຈັກອະນຸເຄາະດ້ວຍ ສິ່ງທີ່ເປັນປະໂຫຍດຢູ່ຢ່າງຜູ້ມີເມດຕາຈິດ ບໍ່ມີໂທສະ” ຜັກຄຸນະ ທ່ານຄວນຕັ້ງໃຈຮູ້ຢ່າງນີ້ແລ

ຍ້ອນແນວນັ້ນ ຖ້າຜູ້ໃດ ຈະເພິ່ງທຳຮ້າຍພິກຂຸນີເຫຼົ່ານັ້ນດ້ວຍຝາມື ກ້ອນດິນ ທ່ອນໄມ້ ແລະອາວຸດຕໍ່ໜ້າທ່ານ ແມ່ນໃນຂໍ້ນັ້ນ ທ່ານກໍຄວນລະສັນທະ ແລະ ວິຕົກອັນອາໄສເຮືອນສາ ທ່ານຄວນຕັ້ງໃຈຮູ້ແນວນີ້ວ່າ “ຈິດຂອງເຮົາຈັກບໍ່ແປຜັນ ເຮົາຈັກບໍ່ເປ່ງວາຈາຊົ່ວຫຍາບ ແລະຈັກ ອະນຸເຄາະດ້ວຍສິ່ງທີ່ເປັນປະໂຫຍດຢູ່ຢ່າງຜູ້ມີເມດຕາຈິດ ບໍ່ມີໂທສະ” ທ່ານຄວນຕັ້ງໃຈຮູ້ຢ່າງນີ້ ແລ

ຍ້ອນແນວນັ້ນ ຖ້າຜູ້ໃດ ຕິຕຽນຕໍ່ໜ້າທ່ານ ແມ່ນໃນຂໍ້ນັ້ນ ທ່ານຄວນລະສັນທະແລະວິຕົກອັນອາໄສເຮືອນເສຍ ທ່ານຄວນຕັ້ງໃຈຮູ້ແນວນີ້ວ່າ "ຈິດຂອງເຮົາຈັກບໍ່ແປຜັນ ເຮົາຈັກບໍ່ເປ່ງວາຈາຊົ່ວຫຍາບ ແລະ ຈັກອະນຸເຄາະດ້ວຍສິ່ງທີ່ເປັນປະໂຫຍດຢູ່ຢ່າງຜູ້ມີເມດຕາຈິດ ບໍ່ມີໂທສະ" ທ່ານຄວນຕັ້ງໃຈຮູ້ຢ່າງນີ້ແລ

ຜັກຄຸນະ ຍ້ອນແນວນັ້ນ ຖ້າຜູ້ໃດ ຈະເພິ່ງທຳຮ້າຍທ່ານດ້ວຍຝາມື ກ້ອນດິນ ທ່ອນໄມ້ ແລະອາວຸດ ແມ່ນໃນຂໍ້ນັ້ນ ທ່ານຄວນລະສັນທະແລະວິຕົກອັນອາໄສເຮືອນເສຍ ທ່ານຄວນຕັ້ງໃຈຮູ້ແນວນີ້ວ່າ "ຈິດຂອງເຮົາຈັກບໍ່ແປຜັນ ເຮົາຈັກບໍ່ເປ່ງວາຈາຊົ່ວຫຍາບ ແລະ ຈັກອະນຸເຄາະດ້ວຍສິ່ງທີ່ເປັນປະໂຫຍດ ຢູ່ຢ່າງຜູ້ມີເມດຕາຈິດ ບໍ່ມີໂທສະ" ຜັກຄຸນະ ທ່ານຄວນຕັ້ງໃຈຢູ່ຢ່າງນີ້ແລ"

## ປະໂຫຍດຂອງການສັນອາຫານຄາບດຽວ

[໒໔໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍການຕັດວ່າ "ພິກຂຸທັງຫຼາຍ ສະໄໝໜຶ່ງ ພິກຂຸຈຳນວນຫຼາຍໄດ້ເຮັດໃຫ້ເຮົາມີຈິດຍິນດີ ເຮົາໄດ້ເຕືອນພິກຂຸທັງຫຼາຍທີ່ນີ້ວ່າ "ເຮົາສັນອາຫານຄາບດຽວ ເຮົາເມື່ອສັນອາຫານຄາບດຽວ ຍ່ອມຮູ້ສຶກວ່າມີອາພາດໜ້ອຍ ມີຄວາມລຳບາກກາຍໜ້ອຍ ມີຄວາມເບົາກາຍ ມີກຳລັງ ແລະ ຢູ່ຢ່າງຜາສຸກ ມາເທີ້ນ ແມ່ນພວກທ່ານກໍຈົ່ງສັນອາຫານຄາບດຽວ ແມ່ນທ່ານທັງຫຼາຍເມື່ອສັນອາຫານມື້ດຽວ ຈັກຮູ້ສຶກວ່າມີອາພາດໜ້ອຍ ມີຄວາມລຳບາກກາຍໜ້ອຍ ມີຄວາມເບົາກາຍ ມີກຳລັງ ແລະ ຢູ່ຢ່າງຜາສຸກ" ເຮົາບໍ່ຕ້ອງບອກສອນພິກຂຸເຫຼົ່ານັ້ນອີກ ພຽງແຕ່ເຮັດໃຫ້ສະຕິເກີດຂຶ້ນໃນພິກຂຸເຫຼົ່ານັ້ນທໍ່ນັ້ນ ລົດທີ່ທຽມດ້ວຍມ້າອາຊາໄນ ເຊິ່ງເຝິກມາດີແລ້ວ ແລ່ນໄປຕາມ ທາງໃຫຍ່ສີ່ແຍກ ເທິງພື້ນຮາບຮຽບໂດຍບໍ່ຕ້ອງໃຊ້ແສ້ ພຽງແຕ່ນາຍສາຣະຖີຜູ້ເຝິກຫັດມ້າທີ່ສະຫຼາດຂຶ້ນລົດແລ້ວຈັບສາຍບັງຫຽນດ້ວຍມືຊ້າຍ ຈັບແສ້ດ້ວຍມືຂວາ ເຕືອນມ້າໃຫ້ແລ່ນກົງໄປ ຫຼື ໂງກັບໄປຕາມຖະໜົນທີ່ຕ້ອງການໄດ້ຕາມຄວາມປາຖະໜາ ແມ່ນສັນໃດ ເຮົາກໍຄືກັນສັນນັ້ນ ບໍ່ຕ້ອງບອກສອນພິກຂຸເຫຼົ່ານັ້ນອີກ ພຽງແຕ່ເຮັດໃຫ້ສະຕິເກີດຂຶ້ນໃນພິກຂຸເຫຼົ່ານັ້ນທໍ່ນັ້ນ ຍ້ອນແນວນັ້ນ ແມ່ນທ່ານທັງຫຼາຍກໍຈົ່ງລະອະກຸສົນທຳ ຈົ່ງທຳຄວາມພາກພຽນໃນກຸສົນທຳທັງຫຼາຍ ເມື່ອເປັນແນວນີ້ ແມ່ນທ່ານທັງຫຼາຍກໍຈັກເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

ພິກຂຸທັງຫຼາຍ ປ່າສາລະອັນກວ້າງ ໃກ້ຈາກເຮືອນຫຼືນິຄົມ ປ່ານັ້ນຮົກໄປດ້ວຍຕົ້ນຫຸ່ງແຫ້ວ ບຸຣຸດບາງຄົນຫວັງດີ ຫວັງປະໂຫຍດ ແລະ ຫວັງຄວາມຈະເລີນໄພບູນຂອງຕົ້ນສາລະນັ້ນ ເຂົາຈຶ່ງຕັດໜໍ່ຕົ້ນສາລະທີ່ຄົດ ທີ່ຖ້າຍາດອາຫານຈາກລຳຕົ້ນແລ້ວນຳອອກໄປຖິ້ມທີ່ພາຍນອກແຜ້ວຖາງພາຍໃນປ່າໃຫ້ສະອາດຮຽບຮ້ອຍ ຖ້າບຳລຸງຖືຮັກສາຕົ້ນສາລະຕົ້ນນ້ອຍ ໆ ທີ່ຊື່ກົງແຂງແຮງດີໄວ້ຢ່າງດີ ດ້ວຍການກະທຳດັ່ງກ່າວມານີ້ ຕໍ່ມາ ປ່າໄມ້ສາລະນັ້ນກໍຈະເລີນ ງອກງາມ

ໄພບູນຂຶ້ນໂດຍລຳດັບ ແມ່ນສັນໃດ ແມ່ນທ່ານທັງຫຼາຍກໍຄືກັນສັນນັ້ນ ຈົ່ງລະອະກຸສົນທຳ ຈົ່ງທຳຄວາມພາກພຽນໃນກຸສົນທຳທັງຫຼາຍ ເມື່ອເປັນແນວນີ້ ທ່ານທັງຫຼາຍກໍຈັກເຖິງຄວາມຈະເລີນງອກງາມ ໄພບູນໃນທຳວິໄນນີ້ເອງ

## ນາງເວເທຫິກາບັນດານໂທສະ

[໔໘໖] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ໃນນະຄອນສາວັດຖີນີ້ເອງ ໄດ້ມີຍິງແມ່ເຮືອນຊື່ ເວເທຫິກາ ນາງມີກິດຕິສັບອັນງາມ ຊ່າລືໄປແລ້ວແນວນີ້ວ່າ "ຍິງແມ່ເຮືອນຊື່ ເວເທຫິກາເປັນຄົນຮຽບຮ້ອຍ ຈຽມຕົນ ໃຈເຢັນ ແລະ ນາງມີສາວໃຊ້ຊື່ ກາລີ ເປັນຄົນຂະຫຍັນ ບໍ່ຂີ້ຄ້ານ ຈັດແຈງການງານໄດ້ດີ"

ຕໍ່ມາ ສາວໃຊ້ຊື່ ກາລີໄດ້ມີຄວາມຄິດແນວນີ້ວ່າ "ກິດຕິສັບອັນງາມຂອງຍາແມ່ຂອງເຮົາຊ່າລືໄປແລ້ວແນວນີ້ວ່າ "ຍິງແມ່ເຮືອນຊື່ເວເທຫິກາເປັນຄົນຮຽບຮ້ອຍ ຈຽມຕົນ ໃຈເຢັນ ຍາແມ່ຂອງເຮົາບໍ່ສະແດງຄວາມຄຽດທີ່ມີຢູ່ພາຍໃນຕົນໃຫ້ຜາກົດ ຫຼື ວ່ານາງບໍ່ມີຄວາມຄຽດຢູ່ເລີຍ ຫຼືຍາແມ່ຂອງເຮົາບໍ່ສະແດງຄວາມຄຽດທີ່ມີຢູ່ໃນພາຍໃນໃຫ້ຜາກົດ ຍ້ອນເຮົາຈັດການງານທັງຫຼາຍຮຽບຮ້ອຍດີ ບໍ່ແມ່ນນາງບໍ່ມີຄວາມຄຽດ ຖ້າຈັ່ງຊັ້ນແລ້ວ ເຮົາຄວນທົດລອງຍາແມ່ເບິ່ງ" ພໍຍາມຮຸ່ງເຊົ້າມາຮອດ ນາງກາລີກໍແກ້ງຕື່ນສາຍ

ເມື່ອເຫັນຈັ່ງຊັ້ນ ແມ່ເຮືອນຊື່ ເວເທຫິກາ ໄດ້ຮ້ອງໃສ່ສາວໃຊ້ຊື່ ກາລີ ວ່າ "ເຮີ້ຍ ນາງກາລີ"

ນາງກາລີຂານຮັບວ່າ "ມີອັນໃດນໍ? ຂ້ານ້ອຍ ຍາແມ່"
ນາງເວເທຫິກາຖາມວ່າ "ເຮີ້ຍ ເປັນຫຍັງ? ເຈົ້າຈຶ່ງຕື່ນສາຍແທ້"
ນາງກາລີຕອບວ່າ "ບໍ່ໄດ້ເປັນຫຍັງ ຂ້ານ້ອຍ"
ນາງຈຶ່ງກ່າວອີກວ່າ "ເຮີ້ຍ ນາງຊາດຊົ່ວ ເມື່ອບໍ່ໄດ້ເປັນຫຍັງ ແລ້ວເປັນຫຍັງເຈົ້າຈຶ່ງຕື່ນສາຍແນວນີ້" ແລ້ວໂກດ ບໍ່ພໍໃຈ ເຮັດໜ້ານິ່ວຄິ້ວຂະໝວດໃສ່ນາງກາລີ

ລຳດັບນັ້ນ ນາງກາລີໄດ້ຄິດວ່າ "ຍາແມ່ຂອງເຮົາພຽງແຕ່ບໍ່ສະແດງຄວາມຄຽດທີ່ມີຢູ່ພາຍໃນຕົນທໍ່ນັ້ນ ບໍ່ແມ່ນນາງບໍ່ມີຄວາມຄຽດ ທີ່ບໍ່ສະແດງຄວາມຄຽດທີ່ມີຢູ່ພາຍໃນຕົນໃຫ້ຜາກົດ ກໍຍ້ອນວ່າເຮົາຈັດການງານທັງຫຼາຍຮຽບຮ້ອຍໄດ້ດີ ບໍ່ແມ່ນນາງບໍ່ມີຄວາມຄຽດ ຖ້າຈັ່ງຊັ້ນແລ້ວເຮົາຈະຕ້ອງທົດລອງຍາແມ່ໃຫ້ຍິ່ງຂຶ້ນໄປອີກ" ຕໍ່ມາ ນາງກາລີກໍຕື່ນສາຍກວ່າທຸກວັນ

ຄັ້ງນັ້ນ ຍິງແມ່ເຮືອນຊື່ ເວເທຫິກາ ກໍຮ້ອງທ້ອງໃສ່ດ່ານາງກາລີອີກວ່າ "ເຮີ້ຍ ນາງກາລີ"
ນາງກາລີຂານຮັບວ່າ "ມີອັນໃດນໍ? ຂ້ານ້ອຍ ຍາແມ່"

ນາງເວເທຫິກາຖາມວ່າ "ເຮີ້ຍ ເປັນຫຍັງ? ເຈົ້າຈຶ່ງຕື່ນສາຍ"
ນາງກາລີຕອບວ່າ "ບໍ່ໄດ້ເປັນຫຍັງ ຂ້ານ້ອຍ"
ນາງຈຶ່ງກ່າວອີກວ່າ "ເຮີ້ຍ ນາງຊາດຊົ່ວ ເມື່ອບໍ່ໄດ້ເປັນຫຍັງແລ້ວ ເປັນຫຍັງເຈົ້າຈຶ່ງຕື່ນສາຍແນວນີ້ອີກ" ແລ້ວຄຽດ ບໍ່ພໍໃຈ ຮ້ອງໃສ່ດ້ວຍຄວາມຂຸ່ນເຄືອງ

ລຳດັບນັ້ນ ນາງກາລີໄດ້ຄິດວ່າ "ຍາແມ່ຂອງເຮົາພຽງແຕ່ບໍ່ສະແດງຄວາມຄຽດທີ່ມີຢູ່ພາຍໃນທໍ່ນັ້ນ ບໍ່ແມ່ນນາງບໍ່ມີຄວາມຄຽດ ທີ່ບໍ່ສະແດງຄວາມຄຽດທີ່ມີຢູ່ພາຍໃນຕົນໃຫ້ຜາກົດ ກໍຍ້ອນເຮົາຈັດການງານທັງຫຼາຍຮຽບຮ້ອຍໄດ້ດີ ບໍ່ແມ່ນນາງບໍ່ມີຄວາມຄຽດ ທາງທີ່ດີ ເຮົາຈະຕ້ອງທົດລອງໃຫ້ຍິ່ງຂຶ້ນໄປກວ່ານີ້ອີກ" ຕໍ່ມາ ນາງກາລີກໍຕື່ນສາຍຍິ່ງກວ່າທຸກມື້

ຄັ້ງນັ້ນ ຍິງແມ່ເຮືອນຊື່ເວເທຫິກາກໍຮ້ອງໃສ່ດ່ານາງກາລີວ່າ "ເຮີ້ຍ ນາງກາລີຊາດຊົ່ວ"
ນາງກາລີຂານຮັບວ່າ "ມີອັນໃດອີກນໍ? ຂ້ານ້ອຍ ຍາແມ່"
ນາງເວເທຫິກາຖາມວ່າ "ເຮີ້ຍ ເປັນຫຍັງ? ເຈົ້າຈຶ່ງຕື່ນສາຍແທ້"
ນາງກາລີຕອບວ່າ "ບໍ່ໄດ້ເປັນຫຍັງ ຂ້ານ້ອຍ"
ນາງຈຶ່ງກ່າວອີກວ່າ "ເຮີ້ຍ ນາງຊາດຊົ່ວ ເມື່ອບໍ່ເປັນຫຍັງແລ້ວ ເປັນຫຍັງເຈົ້າຈຶ່ງຕື່ນສາຍອີກ" ແລ້ວຄຽດຢ່າງແຮງ ຈັບໄລປະຕູຟາດໃສ່ຫົວນາງກາລີ ປາກກໍດ່າວ່າ "ຂ້ອຍຈະຕີຫົວເຈົ້າໃຫ້ແຕກ"

ເວລານັ້ນ ນາງກາລີຫົວແຕກມີເລືອດໄຫຼອາບໜ້າ ທ່ຽວໂພນທະນາແກ່ຄົນເຮືອນໃກ້ເຮືອນຄຽງວ່າ "ພໍ່ແມ່ທັງຫຼາຍ ຂໍເຊີນເບິ່ງການກະທຳຂອງຄົນຮຽບຮ້ອຍ ຈຽມຕົນ ໃຈເຢັນນີ້ເທີ້ນ ນາງຄຽດບໍ່ພໍໃຈວ່າເຮົາຕື່ນສາຍ ຈຶ່ງໄດ້ຈັບໄລປະຕູຟາດໃສ່ຫົວສາວໃຊ້ເຊັ່ນເຮົາ ປາກກໍດ່າວ່າ "ຂ້ອຍຈະຕີຫົວເຈົ້າໃຫ້ແຕກ"

ພິກຂຸທັງຫຼາຍ ຕັ້ງແຕ່ນັ້ນມາ ກິດຕິສັບອັນຊົ່ວຊ້າຂອງຍິງແມ່ເຮືອນຊື່ ເວເທຫິກາ ກໍຊ່າລືໄປແນວນີ້ວ່າ "ຍິງແມ່ເຮືອນຊື່ ເວເທຫິກາ ເປັນຍິງດຸຮ້າຍ ບໍ່ຈຽມຕົນ ໃຈຮ້ອນ" ແມ່ນສັນໃດ ພິກຂຸລາງອົງໃນທຳວິໄນນີ້ກໍຄືກັນສັນນັ້ນ ເປັນຜູ້ຮຽບຮ້ອຍແທ້ຮຽບຮ້ອຍວ່າ ຈຽມຕົນແທ້ຈຽມຕົນວ່າ ໃຈເຢັນແທ້ໃຈເຢັນວ່າ ກໍພຽງແຕ່ເວລາທີ່ຄຳເວົ້າອັນບໍ່ເປັນທີ່ໜ້າພໍໃຈບໍ່ມາກະທົບທໍ່ນັ້ນ ແຕ່ເມື່ອໃດ ຄຳເວົ້າອັນບໍ່ເປັນທີ່ໜ້າພໍໃຈມາກະທົບເຂົ້າ ເມື່ອນັ້ນ ຄວນຮູ້ວ່າ "ພິກຂຸເປັນຜູ້ຮຽບຮ້ອຍ ເປັນຜູ້ຈຽມຕົນ ເປັນຜູ້ໃຈເຢັນແທ້ຫຼືບໍ່" ພິກຂຸທີ່ເຮັດຕົນເປັນຄົນວ່າງ່າຍ ເຖິງຄວາມເປັນຜູ້ວ່າງ່າຍຍ້ອນເຫດແຫ່ງຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ເຮົາບໍ່ຮຽກວ່າ "ເປັນຜູ້ວ່າງ່າຍເລີຍ" ຂໍ້ນັ້ນຍ້ອນເຫດໃດ ຍ້ອນພິກຂຸນັ້ນ ເມື່ອບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານນັ້ນ ກໍຈະບໍ່ເປັນຜູ້ວ່າງ່າຍ ບໍ່ເຖິງຄວາມເປັນຜູ້

ວ່າງ່າຍ ແຕ່ພິກຂຸຜູ້ສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມທຳ ເປັນຜູ້ວ່າງ່າຍ ເຖິງຄວາມເປັນຜູ້ວ່າງ່າຍ ເຮົາຮຽກວ່າ "ເປັນຜູ້ວ່າງ່າຍ" ຍ້ອນເຫດນັ້ນ ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມທຳ ຈັກເປັນຜູ້ວ່າງ່າຍ ຈັກເຖິງຄວາມເປັນຜູ້ວ່າງ່າຍ"

## ອຸບາຍລະງັບຄວາມໂກດ

[໔໔ກ] ພິກຂຸທັງຫຼາຍ ວິທີເວົ້າທີ່ບຸກຄົນອື່ນຈະໃຊ້ເວົ້າກັບທ່ານທັງຫຼາຍ ໕ ປະການນີ້ ຄື

໑. ເວົ້າຕາມການອັນສົມຄວນ ຫຼື ບໍ່ສົມຄວນ
໒. ເວົ້າເລື້ອງທີ່ເປັນຈິງ ຫຼື ບໍ່ເປັນຈິງ
໓. ເວົ້າຄຳທີ່ອ່ອນຫວານ ຫຼື ຄຳຫຍາບຄາຍ
໔. ເວົ້າຄຳທີ່ມີປະໂຫຍດ ຫຼື ຂາດປະໂຫຍດ
໕. ມີເມດຕາຈິດເວົ້າ ຫຼື ມີໂທສະເວົ້າ

ບຸກຄົນອື່ນເມື່ອເວົ້າ ຈະເພິ່ງເວົ້າຕາມການອັນສົມຄວນຫຼືບໍ່ສົມຄວນກໍຕາມ ຈະເພິ່ງເວົ້າເລື້ອງທີ່ເປັນຈິງຫຼືບໍ່ເປັນຈິງກໍຕາມ ຈະເພິ່ງເວົ້າຄຳທີ່ອ່ອນຫວານຫຼືຫຍາບຄາຍກໍຕາມ ຈະເພິ່ງເວົ້າຄຳທີ່ມີປະໂຫຍດຫຼືຂາດປະໂຫຍດກໍຕາມ ຈະເພິ່ງມີເມດຕາຈິດເວົ້າຫຼືມີໂທສະເວົ້າກໍຕາມ ໃນຂໍ້ນັ້ນ ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ຈິດຂອງເຮົາຈັກບໍ່ແປຜັນ ເຮົາຈັກບໍ່ເປ່ງວາຈາຊົ່ວຫຍາບ ແລະຈັກອະນຸເຄາະດ້ວຍສິ່ງອັນເປັນປະໂຫຍດຢູ່ຢ່າງຜູ້ມີເມດຕາຈິດ ບໍ່ມີໂທສະ ເຮົາຈັກແຜ່ເມດຕາຈິດໄປໃຫ້ບຸກຄົນນັ້ນຢູ່ ແລະ ເຮົາຈັກແຜ່ເມດຕາຈິດອັນໄພບູນ ເປັນມະຫັກຄະຕະ[໒] ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນໄປສູ່ສັດໂລກ ທຸກໝູ່ເຫຼົ່າອັນເປັນອາລົມຂອງເມດຕາຈິດນັ້ນຢູ່"

ພິກຂຸທັງຫຼາຍ ທ່ານທັງຫຼາຍຄວນຕັ້ງໃຈຮູ້ດ້ວຍອາການດັ່ງກ່າວມານີ້

## ເຮັດໃຈໃຫ້ໜັກແໜ້ນເໝືອນແຜ່ນດິນ

[໔໔ຂ] ພິກຂຸທັງຫຼາຍ ປຽບເໝືອນ ບຸຣຸດຖືເອົາຈົກແລະກະຕ່າມາແລ້ວເວົ້າແນວນີ້ວ່າ "ເຮົາຈັກເຮັດແຜ່ນດິນຜືນໃຫຍ່ນີ້ບໍ່ໃຫ້ເປັນແຜ່ນດິນ" ເຂົາຈຶ່ງຂຸດລົງບ່ອນນັ້ນ ໆ ຕັກເສດດິນຖິ້ມລົງໄປໃນບ່ອນນັ້ນ ໆ ບ້ວນນ້ຳລາຍລົງໃສ່ໃນບ່ອນນັ້ນ ໆ ຖ່າຍປັດສາວະທົດລົງໃສ່ໃນບ່ອນນັ້ນ ໆ ແລ້ວເວົ້າສົມທົບໃສ່ອີກວ່າ "ເຈົ້າຢ່າເປັນແຜ່ນດິນ ເຈົ້າຢ່າເປັນແຜ່ນດິນ" ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນ ຈັກເຮັດແຜ່ນດິນຜືນໃຫຍ່ນີ້ບໍ່ໃຫ້ເປັນແຜ່ນດິນໄດ້ຫຼືບໍ່?"

"ບໍ່ໄດ້ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນແຜ່ນດິນຜືນໃຫຍ່ນີ້ເລິກຫາປະມານບໍ່ໄດ້ ເຂົາຈະເຮັດແຜ່ນດິນຜືນໃຫຍ່ນັ້ນບໍ່ໃຫ້ເປັນແຜ່ນດິນບໍ່ໄດ້ງ່າຍ ບຸຣຸດນັ້ນ ຈະຕ້ອງໄດ້ຮັບຄວາມເມື່ອຍລ້າແລະຄວາມລຳບາກໃຈຢ່າງແນ່ນອນ"

"ພິກຂຸທັງຫຼາຍ ວິທີເວົ້າທີ່ບຸກຄົນອື່ນຈະໃຊ້ເວົ້າກັບທ່ານທັງຫຼາຍກໍຄືກັນສັນນັ້ນມີຢູ່ ໕ ປະການນີ້ ຄື

໑. ເວົ້າຕາມການອັນສົມຄວນ ຫຼື ບໍ່ສົມຄວນ
໒. ເວົ້າເລື້ອງທີ່ເປັນຈິງ ຫຼື ບໍ່ເປັນຈິງ
໓. ເວົ້າຄຳທີ່ອ່ອນຫວານ ຫຼື ຫຍາບຄາຍ
໔. ເວົ້າຄຳທີ່ມີປະໂຫຍດ ຫຼື ຂາດປະໂຫຍດ
໕. ມີເມດຕາຈິດເວົ້າ ຫຼື ມີໂທສະເວົ້າ

ບຸກຄົນອື່ນເມື່ອເວົ້າ ຈະເພິ່ງເວົ້າຕາມການອັນສົມຄວນ ບໍ່ສົມຄວນກໍຕາມ ຈະເພິ່ງເວົ້າເລື້ອງທີ່ເປັນຈິງ ບໍ່ເປັນຈິງກໍຕາມ ຈະເພິ່ງເວົ້າຄຳທີ່ອ່ອນຫວານຫຼືຫຍາບຄາຍກໍຕາມ ຈະເພິ່ງເວົ້າຄຳທີ່ມີປະໂຫຍດຫຼືຂາດປະໂຫຍດກໍຕາມ ຈະເພິ່ງມີເມດຕາຈິດເວົ້າຫຼືມີໂທສະເວົ້າກໍຕາມ ໃນຂໍ້ນັ້ນທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ຈິດຂອງເຮົາຈັກບໍ່ແປຜັນ ເຮົາຈັກບໍ່ເປັ່ງວາຈາຊົ່ວຫຍາບແລະຈັກອະນຸເຄາະດ້ວຍສິ່ງອັນເປັນປະໂຫຍດຢູ່ຢ່າງຜູ້ມີເມດຕາຈິດ ບໍ່ມີໂທສະ ເຮົາຈັກແຜ່ເມດຕາຈິດໄປໃຫ້ບຸກຄົນນັ້ນຢູ່ ແລະເຮົາຈັກແຜ່ເມດຕາຈິດ ອັນໄພບູນ ສະເໝີດ້ວຍແຜ່ນດິນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນ ໄປສູ່ສັດໂລກທຸກໝູ່ເຫຼົ່າອັນເປັນອາລົມຂອງເມດຕາຈິດນັ້ນຢູ່"

ພິກຂຸທັງຫຼາຍ ທ່ານທັງຫຼາຍຄວນຕັ້ງໃຈຮູ້ດ້ວຍອາການດັ່ງກ່າວມານີ້

## ເຮັດໃຈໃຫ້ວ່າງເໝືອນອາກາດ

[໔໔໙] ພິກຂຸທັງຫຼາຍ ປຽບເໝືອນ ບຸຣຸດຖືເອົາຄັ່ງສີເຫລືອງ ສີຂຽວ ຫຼື ສີແດງເລືອດນົກມາແລ້ວເວົ້າແນວນີ້ວ່າ "ເຮົາຈັກແຕ້ມຮູບໃສ່ອາກາດນີ້ ເຮັດໃຫ້ເປັນຮູບຜາກົດຂຶ້ນ" ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ບຸຣຸດນັ້ນ ຈະແຕ້ມຮູບໃສ່ອາກາດເຮັດໃຫ້ເປັນຮູບຜາກົດຂຶ້ນໄດ້ຫຼືບໍ່?"

"ບໍ່ໄດ້ ຂ້ານ້ອຍ"
"ຂໍ້ນັ້ນ ຍ້ອນເຫດໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນອາກາດນີ້ບໍ່ມີຮູບຮ່າງ ບໍ່ມີພື້ນທີ່ຮອງຮັບ ຊີ້ໃຫ້ເຫັນບໍ່ໄດ້ ເຂົາຈະແຕ້ມຮູບໃສ່ອາກາດເຮັດໃຫ້ເປັນຮູບຜາກົດຂຶ້ນບໍ່ໄດ້ງ່າຍເລີຍ ບຸຣຸດນັ້ນຈະຕ້ອງເມື່ອຍລ້າລຳບາກໃຈຢ່າງແນ່ນອນ"

"ພິກຂຸທັງຫຼາຍ ວິທີເວົ້າທີ່ບຸກຄົນອື່ນຈະໃຊ້ເວົ້າກັບທ່ານທັງຫຼາຍກໍຄືກັນສັນນັ້ນມີຢູ່ ໕ ປະການນີ້ ຄື

໑. ເວົ້າຕາມການອັນສົມຄວນ ຫຼື ບໍ່ສົມຄວນ

ฯລฯ

໕. ມີເມດຕາຈິດເວົ້າ ຫຼື ມີໂທສະເວົ້າ

ฯລฯ ແລະ ເຮົາຈັກແຜ່ເມດຕາຈິດອັນໄພບູນ ສະເໝີດ້ວຍອາກາດ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນ ໄປສູ່ສັດໂລກທຸກໝູ່ເຫຼົ່າອັນເປັນອາລົມຂອງເມດຕາຈິດນັ້ນຢູ່"

ພິກຂຸທັງຫຼາຍ ທ່ານທັງຫຼາຍຄວນຕັ້ງໃຈຮູ້ດ້ວຍອາການດັ່ງກ່າວມານີ້

## ເຮັດໃຈໃຫ້ເປັນເໝືອນແມ່ນ້ຳ

[໔໓໐] ພິກຂຸທັງຫຼາຍ ປຽບເໝືອນບຸຣຸດຖືມັດຫຍ້າທີ່ລຸກເປັນແປວໄຟມາແລ້ວເວົ້າແນວນີ້ວ່າ "ເຮົາຈັກເຜົາແມ່ນ້ຳຄົງຄານີ້ໃຫ້ຮ້ອນຟົດເປັນຄວັນຊັດຂຶ້ນດ້ວຍມັດຫຍ້າທີ່ລຸກເປັນແປວໄຟນີ້" ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ບຸຣຸດນັ້ນຈັກເຜົາແມ່ນ້ຳຄົງຄາໃຫ້ຮ້ອນຟົດເປັນຄວັນຊັດຂຶ້ນດ້ວຍມັດຫຍ້າທີ່ລຸກເປັນແປວໄຟແລ້ວໄດ້ຫຼືບໍ່?"

"ບໍ່ໄດ້ ຂ້ານ້ອຍ"
"ຂໍ້ນັ້ນ ຍ້ອນເຫດໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນແມ່ນ້ຳຄົງຄາເປັນແມ່ນ້ຳທີ່ເລິກສຸດປະມານ ເຂົາຈະເຮັດແມ່ນ້ຳຄົງຄານັ້ນໃຫ້ຮ້ອນຟົດເປັນຄວັນ ຊັດຂຶ້ນດ້ວຍມັດຫຍ້າທີ່ລຸກເປັນແປວແລ້ວ ບໍ່ໄດ້ງ່າຍເລີຍ ບຸຣຸດນັ້ນ ຈະຕ້ອງເມື່ອຍລ້າລຳບາກໃຈຢ່າງແນ່ນອນ"

"ພິກຂຸທັງຫຼາຍ ວິທີເວົ້າທີ່ບຸກຄົນອື່ນຈະໃຊ້ເວົ້າກັບທ່ານທັງຫຼາຍກໍຄືກັນສັນນັ້ນມີຢູ່ ໕ ປະການນີ້ ຄື

໑. ເວົ້າຕາມການອັນສົມຄວນ ບໍ່ສົມຄວນ

ฯລฯ

໕. ມີເມດຕາຈິດເວົ້າຫຼືມີໂທສະເວົ້າ

໗໑໗ ແລະເຮົາຈັກແຜ່ເມດຕາຈິດອັນໄພບູນ ສະເໝີດ້ວຍແມ່ນ້ຳ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນໄປສູ່ສັດໂລກທຸກໝູ່ເຫຼົ່າອັນເປັນອາລົມຂອງ ເມດຕາຈິດນັ້ນຢູ່"

ພິກຂຸທັງຫຼາຍ ທ່ານທັງຫຼາຍຄວນຕັ້ງໃຈຮູ້ດ້ວຍອາການດັ່ງກ່າວມານີ້ແລ

## ເຮັດໃຈໃຫ້ອ່ອນໂຍນເໝືອນເປົາໜັງແມວ

[໔໓໑] ພິກຂຸທັງຫຼາຍ ປຽບເໝືອນເປົາໜັງແມວທີ່ຟອກແລ້ວ ຟອກສະອາດແລ້ວ ຟອກຮຽບຮ້ອຍແລ້ວ ອ່ອນນຸ່ມດັ່ງຍອງຝ້າຍ ຕີບໍ່ມີສຽງ ຕີບໍ່ດັງ ຖ້າມີບຸຮຸດຖືເອົາໄມ້ຫຼືກະເບື້ອງມາແລ້ວເວົ້າແນວນີ້ວ່າ "ເຮົາຈັກເຮັດເປົາໜັງແມວນີ້ທີ່ຟອກແລ້ວ ຟອກສະອາດແລ້ວ ຟອກຮຽບຮ້ອຍແລ້ວ ອ່ອນນຸ່ມດັ່ງຍອງຝ້າຍ ຕີບໍ່ມີສຽງ ຕີບໍ່ດັງ ໃຫ້ມີສຽງດັງກ້ອງດ້ວຍໄມ້ຫຼືກະເບື້ອງ" ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ບຸຮຸດນັ້ນ ຈະເຮັດເປົາໜັງແມວນີ້ທີ່ຟອກແລ້ວ ຟອກສະອາດແລ້ວ ຟອກຮຽບຮ້ອຍແລ້ວ ອ່ອນນຸ່ມ ດັ່ງຍອງຝ້າຍ ຕີບໍ່ມີສຽງ ຕີບໍ່ດັງ ໃຫ້ກັບມີສຽງດັງກ້ອງຂຶ້ນດ້ວຍໄມ້ຫຼືກະເບື້ອງໄດ້ຫຼືບໍ່?"

"ບໍ່ໄດ້ ຂ້ານ້ອຍ"
"ຂໍ້ນັ້ນຍ້ອນເຫດໃດ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນເປົາໜັງແມວນີ້ທີ່ເຂົາຟອກແລ້ວ ຟອກສະອາດແລ້ວຟອກຮຽບຮ້ອຍແລ້ວ ອ່ອນນຸ່ມດັ່ງຍອງຝ້າຍ ຕີບໍ່ມີສຽງງ ຕີບໍ່ດັງ ເຂົາຈະເຮັດເປົາ ໜັງແມວນັ້ນໃຫ້ກັບມີສຽງດັງກ້ອງຂຶ້ນດ້ວຍໄມ້ຫຼືກະເບື້ອງບໍ່ໄດ້ງ່າຍເລີຍ ບຸຮຸດນັ້ນຈະຕ້ອງເມື່ອຍລ້າລຳບາກໃຈຢ່າງແນ່ນອນ"

"ພິກຂຸທັງຫຼາຍ ວິທີເວົ້າທີ່ບຸກຄົນອື່ນຈະໃຊ້ເວົ້າກັບພວກທ່ານກໍຄືກັນສັນນັ້ນມີຢູ່ ໕ ປະການນີ້ ຄື

໑. ເວົ້າຕາມການອັນສົມຄວນ ຫຼື ບໍ່ສົມຄວນ
໒. ເວົ້າເລື້ອງທີ່ເປັນຈິງ ຫຼື ບໍ່ເປັນຈິງ
໓. ເວົ້າຄຳທີ່ອ່ອນຫວານ ຫຼື ຫຍາບຄາຍ
໔. ເວົ້າຄຳທີ່ມີປະໂຫຍດ ຫຼື ຂາດປະໂຫຍດ
໕. ມີເມດຕາຈິດເວົ້າ ຫຼື ມີໂທສະເວົ້າ

ບຸກຄົນອື່ນເມື່ອເວົ້າ ຈະເພິ່ງເວົ້າຕາມການອັນສົມຄວນ ບໍ່ສົມຄວນກໍຕາມ ຈະເພິ່ງເວົ້າເລື່ອງທີ່ເປັນຈິງ ບໍ່ເປັນຈິງກໍຕາມ ຈະເພິ່ງເວົ້າຄຳທີ່ອ່ອນຫວານຫຼືຫຍາບຄາຍກໍຕາມ ຈະເພິ່ງເວົ້າຄຳທີ່ມີປະໂຫຍດຫຼືຂາດປະໂຫຍດກໍຕາມ ຈະເພິ່ງມີເມດຕາຈິດເວົ້າຫຼືມີໂທສະເວົ້າກໍຕາມ ໃນຂໍ້ນັ້ນທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ຈິດຂອງເຮົາຈັກບໍ່ແປຜັນ ເຮົາຈັກບໍ່ເປັ່ງວາຈາຊົ່ວຫຍາບ ແລະຈັກອະນຸເຄາະດ້ວຍສິ່ງອັນເປັນປະໂຫຍດຢູ່ຢ່າງຜູ້ມີເມດຕາຈິດ ບໍ່ມີໂທສະ ເຮົາຈັກແຜ່ເມດຕາຈິດໄປໃຫ້ບຸກຄົນນັ້ນຢູ່ ແລະ ເຮົາຈັກແຜ່ເມດຕາຈິດອັນໄພບູນ ສະເໝີດ້ວຍເປືອກໜັງແມວເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນໄປສູ່ສັດໂລກທຸກໝູ່ເຫຼົ່າອັນເປັນອາລົມຂອງເມດຕາຈິດນັ້ນຢູ່"

ພິກຂຸທັງຫຼາຍ ທ່ານທັງຫຼາຍຄວນຕັ້ງໃຈຮູ້ດ້ວຍອາການດັ່ງກ່າວມານີ້

## ໂອວາດອຸປະມາດ້ວຍເລື່ອຍ

[໒໓໒] ພິກຂຸທັງຫຼາຍ ຫາກພວກໂຈນຜູ້ປະພຶດຕ່ຳຊາມ ຈະເພິ່ງໃຊ້ເລື່ອຍທີ່ມີມືຈັບ ໒ ຂ້າງເລື່ອຍອະໄວຍະວະນ້ອຍໃຫຍ່ຂອງທ່ານອອກກໍຕາມ ຖ້າທ່ານຜູ້ໃດມີໃຈຄິດຮ້າຍແມ່ນໃນພວກໂຈນນັ້ນ ກໍບໍ່ຊື່ວ່າເຮັດຕາມຄຳສັ່ງສອນຂອງເຮົາ ຍ້ອນເຫດທີ່ອົດກັ້ນບໍ່ໄດ້ນັ້ນ ແມ່ນໃນຂໍ້ນັ້ນ ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ຈິດຂອງເຮົາຈັກບໍ່ແປຜັນ ເຮົາຈັກບໍ່ເປັ່ງວາຈາຊົ່ວຫຍາບ ແລະ ຈັກອະນຸເຄາະດ້ວຍສິ່ງທີ່ເປັນປະໂຫຍດຢູ່ຢ່າງຜູ້ມີເມດຕາຈິດ ບໍ່ມີໂທສະ ເຮົາຈັກແຜ່ເມດຕາຈິດ ໄປໃຫ້ບຸກຄົນນັ້ນຢູ່ ແລະ ເຮົາຈັກແຜ່ເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນໄປສູ່ສັດໂລກທຸກໝູ່ເຫຼົ່າ ອັນເປັນອາລົມຂອງເມດຕາຈິດນັ້ນຢູ່"

ພິກຂຸທັງຫຼາຍ ທ່ານທັງຫຼາຍຄວນຕັ້ງໃຈຮູ້ດ້ວຍອາການດັ່ງກ່າວມານີ້ແລ

[໒໓໓] ພິກຂຸທັງຫຼາຍ ທ່ານທັງຫຼາຍຄວນມະນະສິການເຖິງໂອວາດເຊິ່ງມີອຸປະມາດ້ວຍເລື່ອຍນີ້ຢູ່ເລື້ອຍ ໆ ເທີ້ນ ທ່ານທັງຫຼາຍ ເຫັນວິທີເວົ້າທີ່ມີໂທດໜ້ອຍ ຫຼື ມີໂທດຫຼາຍ ທີ່ທ່ານທັງຫຼາຍອົດກັ້ນບໍ່ໄດ້ຫຼືບໍ່?"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ບໍ່ເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍຈົ່ງມະນະສິການເຖິງໂອວາດເຊິ່ງມີອຸປະມາດ້ວຍເລື່ອຍນີ້ຢູ່ເລື້ອຍ ໆ ເທີ້ນ ຂໍ້ນັ້ນ ຈັກມີເພື່ອປະໂຫຍດ ເພື່ອສຸກແກ່ທ່ານທັງຫຼາຍຕະຫຼອດສິ້ນການລະນານ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະ

ພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ກະກະຈູປະມະສູດທີ ໑ ຈົບ**

# ໔. ອະລະຄັດທູປະມະສູດ

## ວ່າດ້ວຍອຸປະມາດ້ວຍອະສໍຣະພິດ

[໔໓໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນ ທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທິດຖີຊົ່ວແນວນີ້ເກີດຂຶ້ນແກ່ພິກຂຸຊື່ ອະຣິດຖະ ຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ[໑] ວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຮູ້ຈົນວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍ[໒] ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້"[໓]

ເມື່ອແລ້ວ ພິກຂຸຫຼາຍອົງໄດ້ຮູ້ຂ່າວວ່າ "ທິດຖີຊົ່ວແນວນີ້ໄດ້ເກີດຂຶ້ນແກ່ອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຮູ້ຈົນວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້" ແລ້ວພິກຂຸເຫຼົ່ານັ້ນໄດ້ເຂົ້າໄປຫາອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງເຖິງທີ່ຢູ່ ແລ້ວໄດ້ກ່າວກັບອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງດັ່ງນີ້ວ່າ "ທ່ານອະຣິດຖະ ໄດ້ຂ່າວວ່າ ທິດຖີຊົ່ວແນວນີ້ໄດ້ເກີດຂຶ້ນແກ່ທ່ານວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຮູ້ຈົນວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້ " ແມ່ນບໍ?"

ອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງກ່າວວ່າ "ເໝືອນຈະເປັນແນວນັ້ນ ທ່ານທັງຫຼາຍ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຮູ້ຈົນວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້"

ລຳດັບນັ້ນ ພິກຂຸເຫຼົ່ານັ້ນ ປາຖະໜາຈະປົດເປື້ອງອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງຈາກທິດຖີຊົ່ວນີ້ ຈຶ່ງຊັກໄຊ້ ໄລ່ລຽງ ສອບສວນດ້ວຍຄຳເວົ້າວ່າ "ທ່ານອະ

ຣິດຖະ ທ່ານຢ່າໄດ້ກ່າວແນວນີ້ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດໄວ້ແນວນັ້ນ ພຣະຜູ້ມີພຣະພາກເຈົ້າຕັດທຳທີ່ກໍ່ອັນຕະລາຍວ່າ ເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະ ທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ປະພຶດໄດ້ຈິງແທ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

"ກາມທັງຫຼາຍ[1] ມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່
ກາມທັງຫຼາຍປຽບເໝືອນຮ່າງໂຄງກະດູກມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່
ກາມທັງຫຼາຍປຽບເໝືອນ ຕ່ອນຊີ້ນ ຯລຯ
ກາມທັງຫຼາຍປຽບເໝືອນ ທວນໄຟຫຍ້າ ຯລຯ
ກາມທັງຫຼາຍປຽບເໝືອນ ຫລຸມຖ່ານເພີງ ຯລຯ
ກາມທັງຫຼາຍປຽບເໝືອນ ຄວາມຝັນ ຯລຯ
ກາມທັງຫຼາຍປຽບເໝືອນ ຂອງທີ່ຂໍຢືມມາ ຯລຯ
ກາມທັງຫຼາຍປຽບເໝືອນ ໝາກໄມ້ຄາຕົ້ນ໑ ຯລຯ
ກາມທັງຫຼາຍປຽບເໝືອນ ຊຽງຊອຍຊີ້ນ ຯລຯ
ກາມທັງຫຼາຍປຽບເໝືອນ ຫອກຫລາວ ຯລຯ
ກາມທັງຫຼາຍປຽບເໝືອນ ຫົວງູ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດຍິ່ງໃຫຍ່"

ອະຣິດຖະພິກຂຸຖືກພິກຂຸເຫຼົ່ານັ້ນ ຊັກໄຊ້ ໄລ່ລຽງ ສອບສວນຢູ່ແນວນີ້ ແຕ່ກໍຍັງກ່າວດ້ວຍຄວາມຍຶດໝັ້ນຖືໝັ້ນທິດຖິຊົ່ວນັ້ນຢູ່ແນວນັ້ນວ່າ "ເໝືອນຈະເປັນແນວນັ້ນ ທ່ານທັງຫຼາຍເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຮູ້ຈັບວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ່ອງເສບໄດ້ຈິງແທ້"

## ອະຣິດຖະພິກຂຸຄັດຄ້ານພຣະທຳ

[໔໑໕] ເມື່ອພິກຂຸເຫຼົ່ານັ້ນ ບໍ່ສາມາດຈະປົດເປື້ອງອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງຈາກທິດຖິຊົ່ວນັ້ນໄດ້ ຈຶ່ງພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ທິດຖິຊົ່ວແນວນີ້ເກີດຂຶ້ນແກ່ອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຈົນວ່າ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງ" ຂ້າພຣະອົງທັງຫຼາຍໄດ້ຟັງວ່າ "ໄດ້ຍິນວ່າ ທິດຖິຊົ່ວແນວນີ້ເກີດຂຶ້ນແກ່ອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງ

ສະແດງແລ້ວ ຮູ້ຈັບວ່າວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້"

ລຳດັບນັ້ນ ຂ້າພຣະອົງທັງຫຼາຍເຂົ້າໄປຫາອະຣິດຖະພິກຂຸແລ້ວໄດ້ຖາມທ່ານວ່າ "ທ່ານອະຣິດຖະ ໄດ້ຮູ້ວ່າ ທິດຖິຊົ່ວແນວນີ້ເກີດຂຶ້ນແກ່ທ່ານແລ້ວວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຮູ້ຈັບວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ຊ່ອງເສບໄດ້ຈິງແມ່ນບໍ?" ເມື່ອຂ້າພຣະອົງທັງຫຼາຍກ່າວແນວນີ້ ອະຣິດຖະພິກຂຸໄດ້ເວົ້າກັບຂ້າພຣະອົງທັງຫຼາຍວ່າ "ເໝືອນຈະເປັນແນວນັ້ນ ທ່ານທັງຫຼາຍເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຮູ້ຈັບວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍ ແກ່ຜູ້ຊ່ອງເສບໄດ້ຈິງແທ້"

ຄັ້ງນັ້ນ ຂ້າພຣະອົງທັງຫຼາຍ ປາຖະໜາຈະປົດເປື້ອງອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງຈາກທິດຖິຊົ່ວນັ້ນ ຈຶ່ງຊັກໄຊ້ ໄລ່ລຽງ ສອບສວນດ້ວຍຄຳເວົ້າວ່າ "ທ່ານອະຣິດຖະ ທ່ານຢ່າໄດ້ກ່າວແນວນັ້ນ ຢ່າໄດ້ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດໄວ້ແນວນັ້ນ ພຣະຜູ້ມີພຣະພາກເຈົ້າຕັດທຳທັງຫຼາຍທີ່ກໍ່ອັນຕະລາຍວ່າເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້ ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

"ການທັງຫຼາຍມີຄວາມຍິນດີນ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່

ການທັງຫຼາຍປຽບເໝືອນຮ່າງໂຄງກະດູກ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່

ฯລฯ

ການທັງຫຼາຍປຽບເໝືອນຫົວງູ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່"

ອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ເມື່ອຖືກຂ້າພຣະອົງທັງຫຼາຍຊັກໄຊ້ ໄລ່ລຽງ ສອບສວນຢູ່ແມ່ນແນວນີ້ ກໍຍັງກ່າວດ້ວຍຄວາມຍຶດໝັ້ນຖືໝັ້ນທິດຖິຊົ່ວນັ້ນຢູ່ແນວນັ້ນວ່າ "ເໝືອນຈະເປັນແນວນັ້ນທ່ານທັງຫຼາຍ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຮູ້ຈັບວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້" ເມື່ອຂ້າພຣະອົງທັງຫຼາຍບໍ່ສາມາດຈະປົດເປື້ອງອະຣິດຖະພິກຂຸຈາກທິດຖິຊົ່ວໄດ້ ຈຶ່ງຂາບທູນເນື້ອຄວາມນີ້ແດ່ພຣະຜູ້ມີພຣະພາກເຈົ້າ ໂດຍຂ້ານ້ອຍ"

## ໂທດຂອງທິດຖິຊົ່ວ

[໔໓໖] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸອົງໜຶ່ງມາດ້ວຍຕັດວ່າ "ມາ

ເທີ້ນ ພິກຂຸ ທ່ານຈົ່ງໄປຮຽກອະຣິດຖະພິກຂຸ ຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງມາ ຕາມຄຳຂອງເຮົາວ່າ "ທ່ານອະຣິດຖະ ພຣະສາດສະດາຕັດຮຽກຫາທ່ານ"

ພິກຂຸນັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາອະຣິດຖະພິກຂຸເຖິງທີ່ຢູ່ແລ້ວກ່າວກັບທ່ານວ່າ "ທ່ານອະຣິດຖະ ພຣະສາດສະດາຕັດຮຽກຫາທ່ານ"

ອະຣິດຖະພິກຂຸ ຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຖິງທີ່ປະທັບ ຖວາຍອະພິວາດ ແລ້ວນັ່ງໃນທີ່ສົມຄວນແຫ່ງຕົນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບອະຣິດຖະພິກຂຸ ຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງວ່າ "ອະຣິດຖະ ໄດ້ຍິນວ່າ ທິດຖິຊົ່ວແນວນີ້ເກີດຂຶ້ນແກ່ທ່ານແລ້ວວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວ ຮູ້ຈົນວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດເຮັດອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້" ແມ່ນບໍ?"

ອະຣິດຖະພິກຂຸຂາບທູນວ່າ "ເປັນຄວາມຈິງ ຂ້ານ້ອຍ ຂ້າພຣະອົງຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຈົນວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດເຮັດອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂມຄະບຸລຸດ ທ່ານຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວແນວນີ້ກັບຜູ້ໃດ ເຮົາກ່າວທຳທີ່ກໍ່ອັນຕະລາຍວ່າ ເປັນທຳກໍ່ອັນຕະລາຍໂດຍປະການຕ່າງ ໆ ບໍ່ແມ່ນບໍ? ແລະທຳເຫຼົ່ານັ້ນ ກໍສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້

ເຮົາກ່າວວ່າ "ກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່

ກາມທັງຫຼາຍປຽບເໝືອນ ຮ່າງໂຄງກະດູກ ຯລຯ
ກາມທັງຫຼາຍປຽບເໝືອນ ຕ່ອນຊີ້ນ ຯລຯ
ກາມທັງຫຼາຍປຽບເໝືອນ ທວນໄຟຫຍ້າ ຯລຯ
ກາມທັງຫຼາຍປຽບເໝືອນ ຂຸມຖ່ານໄຟ ຯລຯ
ກາມທັງຫຼາຍປຽບເໝືອນ ຄວາມຝັນ ຯລຯ
ກາມທັງຫຼາຍປຽບເໝືອນ ຂອງທີ່ຂໍຢືມມາ ຯລຯ
ກາມທັງຫຼາຍປຽບເໝືອນ ໝາກໄມ້ຄາຕົ້ນ ຯລຯ
ກາມທັງຫຼາຍປຽບເໝືອນ ຂຽງຊອຍຊີ້ນ ຯລຯ
ກາມທັງຫຼາຍປຽບເໝືອນ ຫອກຫຼາວ ຯລຯ
ກາມທັງຫຼາຍປຽບເໝືອນ ຫົວງູ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດຍິ່ງໃຫຍ່"

ໂມຄະບຸລຸດ ກໍເມື່ອເປັນແນວນີ້ ທ່ານຊື່ວ່າກ່າວຕູ່ເຮົາດ້ວຍທິດຖິທີ່ຖືໄວ້ຜິດ ຊື່ວ່າທຳລາຍຕົນເອງ ແລະ ຊື່ວ່າປະສົບສິ່ງບໍ່ແມ່ນບຸນເປັນຈຳນວນຫຼາຍ ຂໍ້ນັ້ນ ຈັກເປັນໄປເພື່ອຄວາມບໍ່ເກື້ອກູນ ເພື່ອຄວາມທຸກແກ່ທ່ານຕະຫຼອດການລະນານ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງຜູ້ນີ້ ຈະກະທຳຍານໃຫ້ສູງຂຶ້ນໃນທຳວິໄນນີ້ໄດ້ຫຼືບໍ່ໄດ້?"

ພິກຂຸທັງຫຼາຍຂາບທູນ ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມສູງສົ່ງແຫ່ງຍານໃດ ໆ ທີ່ຈະເພິ່ງມີນັ້ນຈັກມີບໍ່ໄດ້ເລີຍ ຂ້ານ້ອຍ"

ເມື່ອພິກຂຸທັງຫຼາຍຂາບທູນແນວນີ້ແລ້ວ ອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງກໍນັ່ງມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊຶບເຊົາ ມິດປະຕິພານຢູ່

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງນັ່ງມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊຶບເຊົາ ມິດປະຕິພານຢູ່ ຈຶ່ງໄດ້ຕັດກັບທ່ານ ວ່າ "ໂມຄະບຸຣຸດ ທ່ານຈັກຜາກົດດ້ວຍທິດຖິຊົ່ວຂອງຕົນເອງ ເຮົາຈັກສອບຖາມພິກຂຸທັງຫຼາຍໃນບ່ອນນີ້"

[໔໓໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ແມ່ນທ່ານທັງຫຼາຍກໍຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວຢ່າງນີ້ ເໝືອນທີ່ອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງນີ້ກ່າວຕູ່ເຮົາດ້ວຍທິດຖິທີ່ຍຶດຖືໄວ້ຜິດ ຊື່ວ່າ ທຳລາຍຕົນເອງແລະຊື່ວ່າປະສົບສິ່ງບໍ່ແມ່ນບຸນເປັນຈຳນວນຫຼາຍແມ່ນບໍ?"

ພິກຂຸທັງຫຼາຍຂາບທູນວ່າ "ຂໍ້ນັ້ນ ບໍ່ໄດ້ເປັນແນວນັ້ນ ຂ້ານ້ອຍ ຍ້ອນວ່າ ພຣະຜູ້ມີພຣະພາກເຈົ້າຕັດທຳທັງຫຼາຍທີ່ກໍ່ອັນຕະລາຍວ່າ ເປັນທຳກໍ່ອັນຕະລາຍແກ່ຂ້າພຣະອົງທັງຫຼາຍໂດຍປະການຕ່າງ ໆ ແລະ ທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງແທ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່ ກາມທັງຫຼາຍປຽບເໝືອນທ່ອນກະດູກ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່ ຯລຯ ກາມທັງຫຼາຍປຽບເໝືອນຫົວງູ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ຖືກແລ້ວ ພິກຂຸທັງຫຼາຍ ທີ່ທ່ານທັງຫຼາຍຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວແນວນີ້ ເໝືອນທີ່ເຮົາກ່າວແລ້ວວ່າ ທຳທັງຫຼາຍເປັນທຳກໍ່ອັນຕະລາຍແກ່ທ່ານທັງຫຼາຍໂດຍປະການຕ່າງ ໆ ແລະ ທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍແກ່ຜູ້ຊ່ອງເສບໄດ້ຈິງແທ້ ເຮົາກ່າວວ່າ "ກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີ

ໂທດໃຫຍ່ ກາມທັງຫຼາຍປຽບເໝືອນທ່ອນກະດູກ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດໃຫຍ່ ຯລຯ ກາມທັງຫຼາຍປຽບເໝືອນຫົວງູ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ມີໂທດຍິ່ງ"

ແຕ່ວ່າ ອະຣິດຖະພິກຂຸຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງນີ້ກ່າວຕູ່ເຮົາ ດ້ວຍທິດຖິທີ່ຍຶດຖືໄວ້ຜິດ ຊື່ວ່າທຳລາຍຕົນເອງ ແລະ ຊື່ວ່າປະສົບສິ່ງບໍ່ແມ່ນບຸນເປັນຈຳນວນຫຼາຍ ຂໍ້ນັ້ນຈັກເປັນໄປເພື່ອບໍ່ເກື້ອກູນ ເພື່ອຄວາມທຸກແກ່ອະຣິດຖະໂມຄະບຸຣຸດນັ້ນ ຕະຫຼອດການລະນານ

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ອະຣິດຖະພິກຂຸນັ້ນ ຈະເສບກາມໂດຍປາສະຈາກກາມ ປາສະຈາກກາມສັນຍາ ແລະ ປາສະຈາກກາມວິຕົກ

## ການຮ່ຳຮຽນທຳຂອງໂມຄະບຸຣຸດ

[໔໓໘] ພິກຂຸທັງຫຼາຍ ໂມຄະບຸຣຸດລາງພວກໃນທຳວິໄນນີ້ຍ່ອມຮ່ຳຮຽນທຳ ຄື ສຸດຕະເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ແລະເວທັນລະ[១] ພວກເຂົາຮ່ຳຮຽນທຳນັ້ນແລ້ວບໍ່ຮິ່ນຕອງເນື້ອຄວາມແຫ່ງທຳເຫຼົ່ານັ້ນດ້ວຍປັນຍາ ທຳເຫຼົ່ານັ້ນຈຶ່ງບໍ່ປະຈັກແຈ້ງແກ່ພວກເຂົາ ຜູ້ບໍ່ຮິ່ນຕອງເນື້ອຄວາມດ້ວຍປັນຍາ ໂມຄະບຸລຸດເຫຼົ່ານັ້ນຮ່ຳຮຽນທຳມຸ້ງຈະຂົ່ມຂູ່ຜູ້ອື່ນ ແລະ ມຸ້ງຈະປິດຕົນຈາກຄຳນິນທາວ່າຮ້າຍ ຍ່ອມບໍ່ໄດ້ຮັບປະໂຫຍດແຫ່ງທຳນັ້ນ ເໝືອນທີ່ເຫຼົ່າກຸນລະບຸດຮ່ຳຮຽນທຳ ໄດ້ຮັບທຳເຫຼົ່ານັ້ນທີ່ພວກເຂົາຮຽນບໍ່ດີ ຍ່ອມເປັນໄປເພື່ອສິ່ງບໍ່ແມ່ນປະໂຫຍດ ເພື່ອຄວາມທຸກສິ້ນການລະນານ ຂໍ້ນັ້ນ ຍ້ອນເຫດໃດ? ຍ້ອນພວກເຂົາຮຽນທຳທັງຫຼາຍມາບໍ່ດີ

ປຽບເໝືອນ ບຸຣຸດຜູ້ຕ້ອງການງູພິດ ທ່ຽວເສາະສະແຫວງຫາງູພິດ ເຂົາໄດດ້ພົ້ງູພິດຕົວໃຫຍ່ຈຶ່ງຈັບງູທີ່ຂະນົດຫາງຫຼືທີ່ຫາງ ງູພິດນັ້ນຈະເພິ່ງຫັນກັບມາກັດເຂົາທີ່ມື ທີ່ແຂນ ຫຼື ທີ່ອະໄວຍະວະນ້ອຍໃຫຍ່ແຫ່ງໃດແຫ່ງໜຶ່ງ ຍ້ອນການຖືກກັດນັ້ນເຂົາກໍຈະຕາຍ ຫຼື ໄດ້ຮັບທຸກປາງຕາຍ ຂໍ້ນັ້ນຍ້ອນເຫດໃດ? ຍ້ອນເຂົາຈັບງູພິດບໍ່ດີ ແມ່ນສັນໃດ

ພິກຂຸທັງຫຼາຍ ໂມຄະບຸຣຸດລາງພວກໃນທຳວິໄນນີ້ກໍຄືກັນສັນນັ້ນ ຮ່ຳຮຽນທຳ ຄື ສຸດຕະເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ແລະເວທັນລະ ພວກເຂົາຮ່ຳຮຽນທຳນັ້ນແລ້ວ ບໍ່ຮິ່ນຕອງເນື້ອຄວາມແຫ່ງທຳເຫຼົ່ານັ້ນດ້ວຍປັນຍາ ທຳເຫຼົ່ານັ້ນຈຶ່ງບໍ່ປະຈັກແຈ້ງແກ່ພວກເຂົາຜູ້ບໍ່ຮິ່ນຕອງເນື້ອຄວາມດ້ວຍປັນຍາ ໂມຄະບຸຣຸດເຫຼົ່ານັ້ນຮ່ຳຮຽນທຳມຸ້ງຈະຂົ່ມຂູ່ຜູ້ອື່ນ ແລະ ມຸ້ງຈະປິດເປືອງຕົນຈາກຄຳນິນທາວ່າຮ້າຍ ຍ່ອມບໍ່ໄດ້ຮັບປະໂຫຍດແຫ່ງທຳນັ້ນ ເໝືອນທີ່ເຫຼົ່າກຸນລະບຸດຮ່ຳຮຽນທຳໄດ້ຮັບ ທຳເຫຼົ່ານັ້ນທີ່ພວກເຂົາຮຽນບໍ່ດີ ຍ່ອມເປັນໄປເພື່ອສິ່ງ ບໍ່ແມ່ນປະໂຫຍດ ເພື່ອຄວາມທຸກສິ້ນການລະນານ ຂໍ້ນັ້ນຍ້ອນເຫດໃດ? ຍ້ອນພວກເຂົາຮຽນທຳທັງຫຼາຍມາບໍ່ດີ

## ການຮ່ຳຮຽນທຳຂອງກຸນລະບຸດ

[໔໓໙] ພິກຂຸທັງຫຼາຍ ກຸນລະບຸດລາງພວກໃນທຳວິໄນນີ້ຍ່ອມຮ່ຳຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ແລະ ເວທັນລະ ພວກເຂົາຮ່ຳຮຽນທຳນັ້ນແລ້ວ ຍ່ອມຮື່ນຕອງເນື້ອຄວາມແຫ່ງທຳເຫຼົ່ານັ້ນ ດ້ວຍປັນຍາທຳເຫຼົ່ານັ້ນຈຶ່ງປະຈັກແຈ້ງ໌ ແກ່ພວກເຂົາຜູ້ຮື່ນຕອງເນື້ອຄວາມດ້ວຍປັນຍາ ກຸນລະບຸດເຫຼົ່ານັ້ນ ຮ່ຳຮຽນທຳບໍ່ແມ່ນມຸ້ງຈະຂົ່ມຂູ່ຜູ້ອື່ນ ແລະ ບໍ່ແມ່ນມຸ້ງຈະປິດເປືອງຕົນຈາກຄຳນິນທາວ່າຮ້າຍ ຍ່ອມໄດ້ຮັບປະໂຫຍດແຫ່ງທຳນັ້ນ ເໝືອນທີ່ເຫຼົ່າກຸນລະບຸດຮ່ຳຮຽນທຳໄດ້ຮັບ ທຳເຫຼົ່ານັ້ນທີ່ພວກເຂົາຮຽນດີແລ້ວ ຍ່ອມເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານ ຂໍ້ນັ້ນຍ້ອນເຫດໃດ? ຍ້ອນພວກເຂົາຮຽນທຳທັງຫຼາຍມາດີແລ້ວ

ປຽບເໝືອນ ບຸຣຸດຜູ້ຕ້ອງການງູພິດ ທ່ຽວເສາະສະແຫວງຫາງູພິດ ເມື່ອເຂົາພົ້ງງູພິດຕົວໃຫຍ່ ຈະເພິ່ງໃຊ້ໄມ້ມີງ່າມເໝືອນຂາແບ້ກົດຫົວໄວ້ແໜ້ນ ແລ້ວຈຶ່ງຈັບຄໍໄວ້ໃຫ້ແໜ້ນ ເຖິງແມ່ນງູພິດນັ້ນຈະຮັດມື ແຂນ ຫຼື ທີ່ອະໄວຍະວະນ້ອຍໃຫຍ່ແຫ່ງໃດແຫ່ງໜຶ່ງຂອງບຸຣຸດນັ້ນ ດ້ວຍຄົດກໍຕາມ ຍ້ອນການຮັດນັ້ນ ເຂົາກໍບໍ່ຕາຍ ຫຼື ໄດ້ຮັບທຸກເກືອບຕາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນເຂົາຈັບງູພິດໄວ້ໝັ້ນແລ້ວ ແມ່ນສັນໃດ ກຸນລະບຸດລາງພວກໃນທຳວິໄນນີ້ ກໍຄືກັນສັນນັ້ນ ຮ່ຳຮຽນທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ແລະເວທັນລະ ພວກເຂົາເຫຼົ່ານັ້ນຮ່ຳຮຽນທຳນັ້ນແລ້ວ ຮື່ນຕອງເນື້ອຄວາມແຫ່ງທຳເຫຼົ່ານັ້ນດ້ວຍປັນຍາ ທຳເຫຼົ່ານັ້ນຈຶ່ງປະຈັກແຈ້ງແກ່ພວກເຂົາ ຜູ້ຮື່ນຕອງເນື້ອຄວາມດ້ວຍປັນຍາ ກຸນລະບຸດເຫຼົ່ານັ້ນຮ່ຳຮຽນທຳບໍ່ແມ່ນມຸ້ງຈະຂົ່ມຂູ່ຜູ້ອື່ນ ແລະ ບໍ່ແມ່ນມຸ້ງຈະປິດເປືອງຕົນຈາກຄຳນິນທາວ່າຮ້າຍ ຍ່ອມໄດ້ຮັບປະໂຫຍດແຫ່ງທຳນັ້ນ ເໝືອນທີ່ເຫຼົ່າກຸນລະບຸດຮ່ຳຮຽນທຳໄດ້ຮັບທຳເຫຼົ່ານັ້ນທີ່ພວກເຂົາຮຽນດີແລ້ວ ຍ່ອມເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານ ຂໍ້ນັ້ນຍ້ອນເຫດໃດ? ຍ້ອນພວກເຂົາຮຽນທຳທັງຫຼາຍມາດີແລ້ວ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍຈະເພິ່ງຮູ້ແຈ້ງເນື້ອຄວາມແຫ່ງພາສິດໃດຂອງເຮົາ ຄວນຊົງຈຳພາສິດນັ້ນໄວ້ແນວນັ້ນເທີ້ນ ທ່ານທັງຫຼາຍ (ຫາກ) ຈະບໍ່ຮູ້ແຈ້ງເນື້ອຄວາມແຫ່ງພາສິດໃດຂອງເຮົາ ກໍຄວນສອບຖາມເຮົາ ຫຼື ຖາມພິກຂຸຜູ້ສະຫຼາດໃນພາສິດນັ້ນເທີ້ນ

## ທຳອຸປະມາດ້ວຍແພ

[໔໔໐] ພິກຂຸທັງຫຼາຍ ເຮົາຈັກສະແດງທຳເຊິ່ງອຸປະມາດ້ວຍແພແກ່ທ່ານທັງຫຼາຍ ເພື່ອການກຳຈັດອອກ ບໍ່ແມ່ນເພື່ອການຢຶດຖືແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດ

ເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ປຽບເໝືອນ ບຸຣຸດຜູ້ເດີນທາງໄກ ພົບແມ່ນ້ຳໃຫຍ່ ຝັ່ງນີ້ໜ້າຣະແວງມີໄພສະເພາະໜ້າ ຝັ່ງພຸ້ນປອດໄພ ບໍ່ມີໄພສະເພາະໜ້າ ເຮືອ ຫຼື ຂົວສຳລັບຂ້າມເພື່ອຈະໄປຝັ່ງນັ້ນບໍ່ມີ ເຂົາຈະເພິ່ງຄິດແນວນີ້ວ່າ "ແມ່ນ້ຳນີ້ໃຫຍ່ຫຼາຍ ຝັ່ງນີ້ໜ້າຣະແວງ ມີໄພສະເພາະໜ້າ ຝັ່ງພຸ້ນປອດໄພ ບໍ່ມີໄພສະເພາະໜ້າ ເຮືອຫຼືຂົວສຳລັບຂ້າມໄປຝັ່ງນັ້ນບໍ່ມີ ທາງທີ່ດີ ເຮົາຄວນຮີບໂຮມຫຍ້າ ໄມ້ ງ່າໄມ້ ແລະ ໃບໄມ້ມາມັດເປັນແພ ແລ້ວອາໄສແພນັ້ນໃຊ້ມື ແລະ ຕີນຄຸ້ຍນ້ຳໄປກໍຈະຂ້າມຝັ່ງໄດ້ ໂດຍປອດໄພ" ຕໍ່ມາ ເຂົາຮີບໂຮມຫຍ້າ ໄມ້ ງ່າໄມ້ແລະໃບໄມ້ມາມັດເປັນແພແລ້ວອາໄສແພນັ້ນ ໃຊ້ມືແລະຕີນຄຸ້ຍນ້ຳໄປຂ້າມຝັ່ງໄດ້ໂດຍປອດໄພ ເຂົາຂ້າມຝັ່ງໄດ້ແລ້ວ ຈະເພິ່ງມີຄວາມຄິດແນວນີ້ວ່າ "ແພນີ້ມີປະໂຫຍດແກ່ເຮົາຫຼາຍ ເຮົາອາໄສແພນີ້ໃຊ້ມືແລະຕີນຄຸ້ຍນ້ຳໄປຂ້າມຝັ່ງໄດ້ໂດຍປອດໄພ ທາງທີ່ດີ ເຮົາຄວນຍົກແພນີ້ຂຶ້ນເທີນຫົວ ຫຼື ຍົກຂຶ້ນບ່າແບກໄປຕາມຄວາມປາຖະໜາ" ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນຜູ້ເຮັດແນວນີ້ ຈະຊື່ວ່າເຮັດໜ້າທີ່ຕໍ່ແພນັ້ນຖືກຕ້ອງຫຼືບໍ່?"

ພິກຂຸທັງຫຼາຍຂາບທູນວ່າ "ຂໍ້ນັ້ນຊື່ວ່າ ເຮັດບໍ່ຖືກຕ້ອງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ບຸຣຸດນັ້ນເຮັດແນວໃດ ຈຶ່ງຈະຊື່ວ່າເຮັດໜ້າທີ່ຕໍ່ແພນັ້ນຖືກຕ້ອງ ໃນຂໍ້ນີ້ ບຸຣຸດນັ້ນ ຂ້າມຝັ່ງແລ້ວຈະເພິ່ງຄິດແນວນີ້ວ່າ "ແພນີ້ມີປະໂຫຍດແກ່ເຮົາຫຼາຍ ເຮົາອາໄສແພນີ້ໃຊ້ມືແລະຕີນຄຸ້ຍນ້ຳໄປຂ້າມຝັ່ງໄດ້ໂດຍປອດໄພ ທາງທີ່ດີ ເຮົາຄວນຍົກແພນີ້ຂຶ້ນວາງໄວ້ເທິງບົກ ຫຼື ໃຫ້ລອຍຢູ່ໃນນ້ຳ" ແລ້ວໄປຕາມຄວາມປາຖະໜາ ບຸຣຸດນັ້ນຜູ້ເຮັດແນວນີ້ ຈຶ່ງຈະຊື່ວ່າເຮັດໜ້າທີ່ຕໍ່ແພນັ້ນຖືກຕ້ອງ ແມ່ນສັນໃດ

ພິກຂຸທັງຫຼາຍ ເຮົາກໍຄືກັນສັນນັ້ນ ສະແດງທຳມີອຸປະມາດ້ວຍແພເພື່ອຕ້ອງການກຳຈັດອອກບໍ່ແມ່ນເພື່ອຕ້ອງການຈະໃຫ້ຢຶດຖືໄວ້ແກ່ທ່ານທັງຫຼາຍ ເມື່ອທ່ານທັງຫຼາຍຮູ້ທົ່ວເຖິງທຳເຊິ່ງປຽບເໝືອນແພທີ່ເຮົາສະແດງໄວ້ແລ້ວ ຄວນລະແມ່ນທຳທັງຫຼາຍ[໑] ບໍ່ຈຳເປັນຕ້ອງກ່າວເຖິງອະທຳເລີຍ

## ຄວາມເຫັນຂອງປຸຖຸຊົນແລະອະຣິຍະສາວົກ

[໔໔໑] ພິກຂຸທັງຫຼາຍ ທິດຖິຕະຖານ[໒] ໖ ປະການນີ້

ທິດຖິຕະຖານ ໖ ປະການ ອັນໃດແນ

ຄື ປຸຖຸຊົນ[໓] ໃນໂລກນີ້ຜູ້ຍັງບໍ່ໄດ້ສະດັບ ບໍ່ໄດ້ພົບພຣະອະຣິຍະ[໔] ທັງຫຼາຍ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບຄຳແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ພົ້ສັດຕະບຸຣຸດທັງຫຼາຍ

ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບຄຳແນະນຳໃນທຳຂອງສັດຕະບຸຣຸດ

໑. ຈຶ່ງພິຈາລະນາເຫັນຮູບວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ[໕]"

໒. ຈຶ່ງພິຈາລະນາເຫັນເວທະນາວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ"

໓. ຈຶ່ງພິຈາລະນາເຫັນສັນຍາວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ"

໔. ຈຶ່ງພິຈາລະນາເຫັນສັງຂານທັງຫຼາຍວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ"

໕. ຈຶ່ງພິຈາລະນາເຫັນຮູບທີ່ເຫັນແລ້ວ ສຽງທີ່ຟັງແລ້ວ ອາລົມທີ່ຮູ້ແລ້ວ ທຳມາຣົມທີ່ຮູ້ແຈ້ງແລ້ວ ເຖິງແລ້ວ ສະແຫວງຫາແລ້ວ ພິຈາຣະນາແລ້ວດ້ວຍໃຈວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ"

໖. ຈຶ່ງພິຈາລະນາເຫັນທິດຖິຕະຖານທີ່ເປັນໄປວ່າ "ນັ້ນໂລກ ນັ້ນອັດຕາ ເຮົານັ້ນຕາຍແລ້ວຈັກເປັນຜູ້ທ່ຽງ ໝັ້ນຄົງຢູ່ຄືເກົ່າ ບໍ່ມີຄວາມແປຜັນເປັນທຳມະດາ ຈັກດຳລົງຢູ່ທຽບເທົ່າສິ່ງຄົງທີ່ຢູ່ແນວນັ້ນວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ"

ສ່ວນອະຣິຍະສາວົກຜູ້ໄດ້ສະດັບແລ້ວ ໄດ້ພົບພຣະອະຣິຍະທັງຫຼາຍ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບຄຳແນະນຳດີແລ້ວໃນທຳຂອງພຣະອະຣິຍະ ພົບສັດຕະບຸຣຸດທັງຫຼາຍສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບຄຳແນະນຳດີແລ້ວໃນທຳຂອງສັດຕະບຸຣຸດ

໑. ຈຶ່ງພິຈາລະນາເຫັນຮູບວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ"

໒. ຈຶ່ງພິຈາລະນາເຫັນເວທະນາວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນ ອັດຕາຂອງເຮົາ"

໓. ຈຶ່ງພິຈາລະນາເຫັນສັນຍາວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນ ອັດຕາຂອງເຮົາ"

໔. ຈຶ່ງພິຈາລະນາເຫັນສັງຂານທັງຫຼາຍວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ"

໕. ຈຶ່ງພິຈາລະນາເຫັນຮູບທີ່ເຫັນແລ້ວ ສຽງທີ່ຟັງແລ້ວ ອາລົມທີ່ຮູ້ແລ້ວ ທຳມາຣົມທີ່ຮູ້ແຈ້ງແລ້ວ ເຖິງແລ້ວ ສະແຫວງຫາແລ້ວ ພິຈາຣະນາແລ້ວດ້ວຍໃຈວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ"

໖. ຈຶ່ງພິຈາລະນາທິດຖິຕະຖານທີ່ເປັນໄປວ່າ "ນັ້ນໂລກ ນັ້ນອັດຕາ ເຮົານັ້ນຕາຍແລ້ວຈັກ ທ່ຽງ ໝັ້ນຄົງຢູ່ຄືເກົ່າ ບໍ່ມີຄວາມແປຜັນເປັນທຳມະດາ ຈັກດຳລົງຢູ່ທຽບເທົ່າສິ່ງຄົງທີ່ຢູ່ແນວນັ້ນ" ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ"

ອະຣິຍະສາວົກນັ້ນ ພິຈາລະນາເຫັນຢູ່ແນວນີ້ ຍ່ອມບໍ່ສະດຸ້ງຕົກໃຈໃນເມື່ອບໍ່ມີເຫດໃຫ້ໜ້າສະດຸ້ງ[໑] ຕົກໃຈ ຄື ໄພແລະຕັນຫາ"

## ຄວາມສະດຸ້ງແລະຄວາມບໍ່ສະດຸ້ງ

[໔໔໔] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບໍ່ມີເຫດພາຍນອກ ຄວາມສະດຸ້ງຈະເພິ່ງມີໄດ້ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເພິ່ງມີໄດ້ ພິກຂຸ ບຸກຄົນລາງຄົນໃນໂລກນີ້ມີຄວາມຄິດແນວນີ້ວ່າ "ເຮົາເຄີຍມີສິ່ງໃດ ບັດນີ້ເຮົາບໍ່ມີສິ່ງນັ້ນແລ້ວ ເຮົາຄວນມີສິ່ງໃດ ເຮົາກໍບໍ່ໄດ້ສິ່ງນັ້ນ" ບຸກຄົນນັ້ນຍ່ອມເສົ້າໂສກ ທໍ່ຫ່ຽວໃຈ ເຮໂຮນ ຮ່ຳໄຮ ຮ້ອງໄຫ້ສະອຶກສະອື້ນ ເຖິງຄວາມມືດມົນ ເມື່ອບໍ່ມີເຫດພາຍນອກ ຄວາມສະດຸ້ງຍ່ອມມີໄດ້ດ້ວຍອາການແນວນີ້"

"ເມື່ອບໍ່ມີເຫດພາຍນອກ ຄວາມບໍ່ສະດຸ້ງຈະເພິ່ງມີໄດ້ບໍ? ຂ້ານ້ອຍ"

"ເພິ່ງມີໄດ້ ພິກຂຸ ບຸກຄົນລາງຄົນໃນໂລກນີ້ບໍ່ມີຄວາມຄິດແນວນີ້ວ່າ "ເຮົາເຄີຍມີສິ່ງໃດ ບັດນີ້ເຮົາບໍ່ມີສິ່ງນັ້ນແລ້ວ ເຮົາຄວນມີສິ່ງໃດ ເຮົາກໍບໍ່ໄດ້ສິ່ງນັ້ນ" ບຸກຄົນນັ້ນຍ່ອມບໍ່ເສົ້າໂສກ ບໍ່ທໍ່ຫ່ຽວໃຈ ບໍ່ເຮໂຮນຮ່ຳໄຮ ບໍ່ຮ້ອງໄຫ້ສະອຶກສະອື້ນ ບໍ່ເຖິງຄວາມມືດມົນ ເມື່ອບໍ່ມີສິ່ງພາຍນອກ ຄວາມບໍ່ສະດຸ້ງຍ່ອມມີໄດ້ດ້ວຍອາການແນວນີ້"

"ເມື່ອບໍ່ມີສິ່ງພາຍໃນ ຄວາມສະດຸ້ງຈະເພິ່ງມີໄດ້ບໍ? ຂ້ານ້ອຍ"

"ເພິ່ງມີໄດ້ ພິກຂຸ ບຸກຄົນລາງຄົນໃນໂລກນີ້ມີຄວາມຄິດແນວນີ້ວ່າ "ນັ້ນໂລກ ນັ້ນອັດຕາ

ເຮົານັ້ນຕາຍແລ້ວຈັກເປັນຜູ້ທ່ຽງ ໝັ້ນຄົງຢູ່ຄືເກົ່າ ບໍ່ມີຄວາມແປຜັນເປັນທຳມະດາ ຈັກດຳລົງຢູ່ທຽບເທົ່າສິ່ງຄົງທີ່ຢູ່ແນວນັ້ນ" ແຕ່ເມື່ອຍ້ອນໄດ້ຍິນຕະຖາຄົດ ຫຼື ສາວົກຂອງຕະຖາຄົດສະແດງທຳເພື່ອຖອນທິດຖິ ທິດຖິຕະຖານ ຄວາມຕັ້ງໝັ້ນແຫ່ງທິດຖິ ຄວາມຕຸ້ມໂຮມແຫ່ງທິດຖິ ຄວາມຢຶດໝັ້ນ ແລະ ອະນຸໄສກິເລດທັງປວງ ເພື່ອລະງັບສັງຂານທັງປວງ ເພື່ອກຳຈັດຖິ້ມອຸປະທິທັງປວງ ເພື່ອຄວາມສິ້ນຕັນຫາ ເພື່ອຄາຍຄວາມກຳໜັດ ເພື່ອຄວາມດັບແຈບ ແລະ ເພື່ອນິບພານ ເຂົາມີຄວາມຄິດແນວນີ້ວ່າ "ເຮົາຈັກຂາດສູນແນ່ແທ້ ຈັກພິນາດແນ່ແທ້ ຈັກບໍ່ມີແນ່ແທ້" ບຸກຄົນນັ້ນຍ່ອມເສົ້າໂສກ ທໍ່ຫ່ຽວໃຈ ເຣໂຣນ ຮ່ຳໄຮ ຮ້ອງໄຫ້ສະອຶກສະອື້ນ ເຖິງຄວາມມືດມົນ ເມື່ອບໍ່ມີສິ່ງພາຍໃນ ຄວາມສະດຸ້ງຍ່ອມມີໄດ້ດ້ວຍອາການແນວນີ້"

ພິກຂຸນັ້ນທູນຖາມວ່າ "ເມື່ອບໍ່ມີສິ່ງພາຍໃນ ຄວາມບໍ່ສະດຸ້ງຈະເພິ່ງມີໄດ້ບໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເພິ່ງມີໄດ້ ພິກຂຸ ບຸກຄົນລາງຄົນໃນໂລກນີ້ບໍ່ມີຄວາມຄິດແນວນີ້ວ່າ "ນັ້ນໂລກ ນັ້ນອັດຕາ ເຮົານັ້ນຕາຍແລ້ວຈັກເປັນຜູ້ທ່ຽງ ໝັ້ນຄົງຢູ່ຄືເກົ່າ ບໍ່ມີຄວາມແປຜັນເປັນທຳມະດາ ຈັກດຳລົງຢູ່ທຽບເທົ່າສິ່ງຄົງທີ່ຢູ່ແນວນັ້ນ" ແຕ່ເມື່ອໄດ້ຍິນຕະຖາຄົດຫຼືສາວົກຂອງຕະຖາຄົດສະແດງທຳ ເພື່ອຖອນທິດຖິ ທິດຖິຕະຖານ ຄວາມຕັ້ງໝັ້ນ ແຫ່ງທິດຖິຄວາມຊູນຮຸມແຫ່ງທິດຖິ ຄວາມຢຶດໝັ້ນ ແລະ ອະນຸໄສກິເລດທັງປວງ ເພື່ອລະງັບ ສັງຂານທັງປວງ ເພື່ອກຳຈັດຖິ້ມອຸປະທິທັງປວງ ເພື່ອຄວາມສິ້ນຕັນຫາ ເພື່ອຄາຍຄວາມກຳໜັດ ເພື່ອຄວາມດັບແຈບ ແລະ ເພື່ອນິບພານ ເຂົາບໍ່ມີຄວາມຄິດແນວນີ້ວ່າ "ເຮົາຈັກຂາດສູນແນ່ແທ້ ຈັກພິນາດແນ່ແທ້ ຈັກບໍ່ມີແນ່ແທ້" ບຸກຄົນນັ້ນຍ່ອມບໍ່ເສົ້າໂສກ ບໍ່ທໍ່ຫ່ຽວໃຈ ເຣໂຣນ ຮ່ຳໄຮ ບໍ່ຮ້ອງໄຫ້ສະອຶກສະອື້ນ ບໍ່ເຖິງຄວາມມືດມົນ ເມື່ອບໍ່ມີສິ່ງພາຍໃນ ຄວາມບໍ່ສະດຸ້ງຍ່ອມມີໄດ້ດ້ວຍອາການແນວນີ້

[໔໔໑] ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເພິ່ງຫວງແຫນ ສິ່ງທີ່ຄວນຫວງແຫນເຊິ່ງເປັນຂອງທ່ຽງ ໝັ້ນຄົງຢູ່ຄືເກົ່າ ບໍ່ມີຄວາມແປຜັນເປັນທຳມະດາ ເພິ່ງດຳລົງຢູ່ທຽບເທົ່າສິ່ງຄົງທີ່ຢູ່ແນວນັ້ນ ແລ້ວທ່ານທັງຫຼາຍໄດ້ເຫັນສິ່ງທີ່ຄວນຫວງແຫນ ເຊິ່ງເປັນຂອງທ່ຽງ ໝັ້ນຄົງຢູ່ຄືເກົ່າ ບໍ່ມີຄວາມແປຜັນເປັນທຳມະດາ ເພິ່ງດຳລົງຢູ່ທຽບເທົ່າສິ່ງຄົງທີ່ຢູ່ແນວນັ້ນແລ້ວຫຼືບໍ່?"

ພິກຂຸທັງຫຼາຍຂາບທູນວ່າ "ຂ້າພຣະອົງທັງຫຼາຍ ບໍ່ເຄີຍໄດ້ເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ເຮົາກໍຍັງບໍ່ພິຈາລະນາເຫັນສິ່ງທີ່ຄວນຫວງແຫນເຊິ່ງເປັນຂອງທ່ຽງ ໝັ້ນຄົງຢູ່ຄືເກົ່າ ບໍ່ມີຄວາມແປຜັນເປັນທຳມະດາ ເພິ່ງດຳລົງຢູ່ທຽບເທົ່າສິ່ງຄົງທີ່ຢູ່ແນວນັ້ນ

ທ່ານທັງຫຼາຍຈະເພິ່ງເຂົ້າໄປຢຶດຖືອັດຕະວາທຸປາທານ[១] ເຊິ່ງເມື່ອບຸກຄົນຢຶດໝັ້ນຢູ່ ໂສກະ

(ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ຈຶ່ງຈະບໍ່ເກີດຂຶ້ນ ທ່ານທັງຫຼາຍເຄີຍເຫັນອັດຕະວາທຸປາທານເຊິ່ງເມື່ອບຸກຄົນຍຶດໝັ້ນຢູ່ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈຶ່ງຈະບໍ່ເກີດຂຶ້ນແດ່ຫຼືບໍ່?"

"ບໍ່ເຄີຍເຫັນ ຂ້ານ້ອຍ"

"ດີແລ້ວ ເຖິງເຮົາກໍຍັງບໍ່ພິຈາລະນາເຫັນອັດຕະວາທຸປາທານ ເຊິ່ງເມື່ອບຸກຄົນຍຶດໝັ້ນຢູ່ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງຈະບໍ່ເກີດຂຶ້ນ

ທ່ານທັງຫຼາຍຈະເພິ່ງອາໄສທິດຖິນິດໄສ[๑] ເຊິ່ງເມື່ອບຸກຄົນອາໄສຢູ່ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງຈະບໍ່ເກີດຂຶ້ນ ທ່ານທັງຫຼາຍເຄີຍເຫັນທິດຖິນິດໄສ ເຊິ່ງເມື່ອບຸກຄົນອາໄສຢູ່ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງຈະບໍ່ເກີດຂຶ້ນແດ່ຫຼືບໍ່?"

ພິກຂຸທັງຫຼາຍຂາບທູນວ່າ "ບໍ່ເຄີຍເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ດີແລ້ວ ແມ່ນເຮົາກໍຍັງບໍ່ພິຈາລະນາເຫັນທິດຖິນິດໄສ ເຊິ່ງເມື່ອບຸກຄົນອາໄສຢູ່ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈຶ່ງຈະບໍ່ເກີດຂຶ້ນ"

## ອະນັດຕະລັກສະນະ

[໔໔໔] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ເມື່ອອັດຕາມີຢູ່ ຄວາມຍຶດຖືວ່າ "ສິ່ງທີ່ເນື່ອງດ້ວຍອັດຕາຂອງເຮົາ" ກໍຈະເພິ່ງມີແມ່ນບໍ?"

ພິກຂຸທັງຫຼາຍທູນຕອບວ່າ "ແມ່ນ ຂ້ານ້ອຍ"

"ເມື່ອສິ່ງທີ່ເນື່ອງດ້ວຍອັດຕາມີຢູ່ ຄວາມຍຶດຖືວ່າ "ອັດຕາຂອງເຮົາ" ຈະເພິ່ງມີແມ່ນບໍ?"

"ແມ່ນ ຂ້ານ້ອຍ"

"ເມື່ອຫາບໍ່ພໍ້ອັດຕາ ແລະ ສິ່ງທີ່ເນື່ອງດ້ວຍອັດຕາ ໂດຍຄວາມເປັນຈິງໂດຍຄວາມແນ່ແທ້ ທິດຖິທີ່ວ່າ "ນັ້ນໂລກ ນັ້ນອັດຕາ ເຮົານັ້ນຕາຍແລ້ວຈັກເປັນຜູ້ທ່ຽງ ໝັ້ນຄົງຢູ່ຄືເກົ່າ ບໍ່ມີຄວາມແປຜັນເປັນທຳມະດາ ຈັກດຳລົງຢູ່ທຽບເທົ່າສິ່ງຄົງທີ່ຢູ່ແນວນັ້ນ" ນີ້ ຈັກບໍ່ແມ່ນເປັນພານທຳ (ທຳຂອງຄົນໂງ່) ແລ້ວບໍ?"

"ເປັນຫຍັງຈະບໍ່ແມ່ນ ນັ້ນເປັນພານທຳຢ່າງແທ້ຈິງບໍ່ຕ້ອງສົງໄສ ຂານ້ອຍ"

"ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ຮູບທ່ຽງ ຫຼື ບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ?"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

"ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງ ຫຼື ບໍ່ທ່ຽງ?"

"ບໍ່ທ່ຽງ ຂ້ານ້ອຍ"

"ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ"

"ເປັນທຸກ ຂ້ານ້ອຍ"

"ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ"

"ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ຮູບແນວໃດແນວໜຶ່ງທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ທ່ານທັງຫຼາຍຄວນເຫັນຮູບທັງປວງຕາມຄວາມເປັນຈິງ ດ້ວຍປັນຍາອັນຊອບແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເວທະນາແນວໃດແນວໜຶ່ງ ຯລຯ ສັນຍາແນວໃດແນວໜຶ່ງ ຯລຯ ສັງຂານເຫຼົ່າໃດເຫຼົ່າໜຶ່ງ ຯລຯ ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ທ່ານທັງຫຼາຍຄວນເຫັນວິນຍານທັງປວງຕາມຄວາມເປັນຈິງດ້ວຍປັນຍາອັນຊອບແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ"

## ການລະສັງໂຍດ

[໔໔໕] ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບແລ້ວ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍໃນຮູບ ເວທະນາ ສັນຍາ ສັງຂານ ແລະ ວິນຍານ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຈຶ່ງລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ" ພິກຂຸນີ້ເຮົາຮຽກວ່າ ເປັນຜູ້ຖອນຫຼົ້ມໄດ້ແລ້ວແດ່ ເປັນຜູ້ຮື້ເຄື່ອງແວດລ້ອມໄດ້ແລ້ວແດ່ ເປັນຜູ້ຖອນເສົາຣະນຽດໄດ້ແລ້ກໄວແດ່ ເປັນຜູ້ບໍ່ມີບານປະຕູແດ່ ເປັນຜູ້ປະເສີດ ລຸດທຸງຄືມານະລົງແລ້ວ ປົງພາລະໄດ້ແລ້ວ ປາສະຈາກສັງໂຍດ (ກິເລດເຄື່ອງຜູກມັດສັດໄວ້ໃນພົບ) ແລ້ວແດ່

ພິກຂຸເປັນຜູ້ຖອນຫຼັ້ມໄດ້ແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລະອະວິດຊາໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸເປັນຜູ້ຖອນຫຼັ້ມໄດ້ແລ້ວ ເປັນຢ່າງນີ້

ພິກຂຸເປັນຜູ້ຮື້ເຄື່ອງແວດລ້ອມໄດ້ແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລະສັງຂານຄືຊາດ[໒] ເຊິ່ງກໍ່ພົບໃໝ່ໄດ້ເດັດຂາດແລ້ວ ຕັດຮາກຖອນໂຄນເໝືອນຕົ້ນຕານທີ່ຖືກຕັດຮາກຖອນໂຄນໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸເປັນຜູ້ຮື້ເຄື່ອງແວດລ້ອມໄດ້ແລ້ວ ເປັນແນວນີ້

ພິກຂຸເປັນຜູ້ຖອນເສົາຣະນຽດໄດ້ແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລະຕັນຫາໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸເປັນຜູ້ຖອນເສົາຣະນຽດໄດ້ແລ້ວ ເປັນຢ່າງນີ້

ພິກຂຸເປັນຜູ້ບໍ່ມີບານປະຕູ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລະໂອຣຳພາຄິຍະສັງໂຍດ ໕ ປະການ[໑]ໄດ້ເດັດຂາດແລ້ວຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸເປັນຜູ້ບໍ່ມີບານປະຕູ ເປັນຢ່າງນີ້

ພິກຂຸເປັນຜູ້ປະເສີດລຸດທຸງຄືມານະລົງແລ້ວ ປົງພາລະໄດ້ແລ້ວ ປາສະຈາກສັງໂຍດແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລະອັດສະມິມານະ (ການຖືຕົວ) ໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸເປັນຜູ້ປະເສີດ ລຸດທຸງຄືມານະລົງແລ້ວ ປົງພາລະໄດ້ແລ້ວ ປາສະຈາກສັງໂຍດແລ້ວ ເປັນຢ່າງນີ້

## ການບໍ່ຢຶດຖື

[໔໔໖] ພິກຂຸທັງຫຼາຍ ເມື່ອເທວະດາ ພ້ອມທັງພຣະອິນ ພົມ ແລະ ມານທັງຫຼາຍ ສະແຫວງຫາຕະຖາຄົດຜູ້ມີຈິດລຸດພົ້ນແລ້ວຢ່າງນີ້ ຍ່ອມບໍ່ເຫັນວ່າ "ວິນຍານຂອງຕະຖາຄົດອາໄສສິ່ງ

ນີ້" ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາກ່າວວ່າ "ໃນປັດຈຸບັນຜູ້ໃດ ຈຶ່ງຈະບໍ່ພົບຕະຖາຄົດ" ສະມະນະພາມພວກໜຶ່ງກ່າວຕູ່ເຮົາຜູ້ກ່າວແນວນີ້ ຜູ້ບອກແນວນີ້ດ້ວຍຄຳຕົວະ ເຊິ່ງເປັນການເລື່ອນລອຍ ບໍ່ມີຈິງ ບໍ່ເປັນຈິງວ່າ "ພຣະສະມະນະໂຄດົມເປັນຜູ້ກຳຈັດ ຍ່ອມບັນຍັດ ຄວາມຂາດສູນ ຄວາມພິນາດ ຄວາມບໍ່ມີບພົບ ຂອງສັດຜູ້ມີຢູ່" ເຖິງເຮົາຈະກ່າວຫຼືບໍ່ກ່າວກໍຕາມ ສະມະນະພາມເຫຼົ່ານັ້ນກໍຍັງກ່າວຕູ່ເຮົາດ້ວຍຄຳຕົວະ ເຊິ່ງເປັນການເລື່ອນລອຍ ບໍ່ມີຈິງ ບໍ່ເປັນຈິງວ່າ "ພຣະສະມະນະໂຄດົມເປັນຜູ້ກຳຈັດ ຍ່ອມບັນຍັດຄວາມຂາດສູນ ຄວາມພິນາດ ຄວາມບໍ່ມີພົບຂອງສັດຜູ້ມີຢູ່" ທັງໃນການກ່ອນແລະໃນການບັດນີ້ ເຮົາບັນຍັດທຸກແລະຄວາມດັບທຸກ ຖ້າບຸກຄົນເຫຼົ່າອື່ນດ່າຕິຕຽນ ໃສ່ຮ້າຍ ບຽດບຽນ ແລະ ກະທົບກະທັ່ງຕະຖາຄົດໃນເລື້ອງການປະກາດສັດຈະ ໔ ປະການນັ້ນ ຕະຖາຄົດກໍບໍ່ມີຄວາມອາຄາດ ຄຽດແຄ້ນ ບໍ່ເສຍໃຈ ບໍ່ມີຈິດຄິດຮ້າຍຍ້ອນການດ່ານັ້ນເປັນຕົ້ນ

ຖ້າບຸກຄົນເຫຼົ່າອື່ນສັກກາຣະ ເຄົາລົບ ນັບຖື ແລະບູ ຊາຕະຖາຄົດໃນເລື້ອງການປະກາດສັດຈະ ໔ ປະການນັ້ນ ຕະຖາຄົດກໍບໍ່ມີຄວາມຍິນດີ ດີໃຈ ບໍ່ມີຄວາມລຳພອງໃຈຍ້ອນສັກກາຣະນັ້ນເປັນຕົ້ນ

ຖ້າບຸກຄົນເຫຼົ່າອື່ນສັກກາຣະ ເຄົາລົບ ນັບຖື ແລະ ບູຊາຕະຖາຄົດໃນເລື້ອງການປະກາດສັດຈະ ໔ ປະການນັ້ນ ຕະຖາຄົດມີຄວາມດຳຣິຢ່າງນີ້ ຍ້ອນສັກກາຣະເປັນຕົ້ນນັ້ນວ່າ "ບຸກຄົນທຳສັກກາຣະເຫັນຢູ່ແນວນີ້ໃນຂັນທະປັນຈະກະ (ຂັນ ໕) ທີ່ເຮົາກຳນົດຮູ້ແລ້ວໃນການກ່ອນ"

ຍ້ອນເຫດນັ້ນ ຖ້າບຸກຄົນເຫຼົ່າອື່ນຈະເພິ່ງດ່າ ຕະຕຽນ ໃສ່ຮ້າຍ ບຽດບຽນ ແລະ ກະທົບທ່ານທັງຫຼາຍ ທ່ານທັງຫຼາຍກໍບໍ່ຄວນທຳຄວາມອາຄາຕ ບໍ່ຄວນທຳຄວາມເສຍໃຈ ບໍ່ຄວນເຮັດຈິດຄິດຮ້າຍຍ້ອນການດ່ານັ້ນເປັນຕົ້ນ

ຍ້ອນເຫດນັ້ນ ຖ້າບຸກຄົນເຫຼົ່າອື່ນຈະເພິ່ງສັກກາຣະ ເຄົາລົບ ນັບຖື ແລະບູຊາທ່ານທັງຫຼາຍ ທ່ານທັງຫຼາຍກໍບໍ່ຄວນທຳຄວາມຍິນດີ ບໍ່ຄວນທຳຄວາມດີໃຈ ບໍ່ຄວນທຳຄວາມລຳພອງໃຈຍ້ອນສັກກາຣະເປັນຕົ້ນນັ້ນ

ພິກຂຸທັງຫຼາຍ ຖ້າບຸກຄົນເຫຼົ່າອື່ນຈະເພິ່ງສັກກາຣະ ເຄົາລົບ ນັບຖື ແລະ ບູຊາທ່ານທັງຫຼາຍ ທ່ານທັງຫຼາຍຄວນຄິດຢ່າງນີ້ ຍ້ອນສັກກາຣະເປັນຕົ້ນນັ້ນວ່າ "ບຸກຄົນທຳການສັກກາຣະເຫັນຢູ່ແນວນີ້ໃນຂັນທະປັນຈະກະທີ່ເຮົາທັງຫຼາຍກຳນົດຮູ້ແລ້ວໃນການກ່ອນ"

[໔໑໗] ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ສິ່ງໃດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສິ່ງນັ້ນ ສິ່ງນັ້ນເຊິ່ງທ່ານທັງຫຼາຍລະໄດ້ແລ້ວ ຈັກມີເພື່ອປະໂຫຍດ ເພື່ອຄວາມສຸກ ສິ້ນການລະນານ ອັນໃດນໍ? ບໍ່ແມ່ນຂອງທ່ານທັງຫຼາຍ ຮູບບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງ

ລະຮູບນັ້ນເສຍ ຮູບນັ້ນເຊິ່ງທ່ານທັງຫຼາຍລະໄດ້ແລ້ວ ຈັກມີເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານແກ່ທ່ານທັງຫຼາຍ

ເວທະນາບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈຶ່ງລະເວທະນານັ້ນ ເວທະນານັ້ນເຊິ່ງທ່ານທັງຫຼາຍລະໄດ້ແລ້ວ ຈັກມີເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານ

ສັນຍາບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈຶ່ງລະສັນຍານັ້ນ ສັນຍານັ້ນ ເຊິ່ງທ່ານທັງຫຼາຍລະໄດ້ແລ້ວ ຈັກມີເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານ

ສັງຂານທັງຫຼາຍບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈຶ່ງລະສັງຂານເຫຼົ່ານັ້ນ ສັງຂານເຫຼົ່ານັ້ນເຊິ່ງທ່ານທັງຫຼາຍລະໄດ້ແລ້ວ ຈັກມີເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານ

ວິນຍານບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈຶ່ງລະວິນຍານນັ້ນ ວິນຍານນັ້ນ ເຊິ່ງທ່ານທັງຫຼາຍລະໄດ້ແລ້ວ ຈັກມີເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານແກ່ທ່ານທັງຫຼາຍ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າເປັນຢ່າງໃດ? ບຸກຄົນຈະເພິ່ງນຳຫຍ້າໄມ້ ງ່າໄມ້ ແລະ ໃບໄມ້ໃນພຣະເຊຕະວັນນີ້ໄປເຜົາ ຫຼື ທຳການຕາມຄວາມປາຖະໜາ ທ່ານທັງຫຼາຍ ຈະເພິ່ງຄິດຢ່າງນີ້ແດ່ຫຼືບໍ່ວ່າ "ບຸກຄົນນັ້ນໄດ້ນຳເຮົາທັງຫຼາຍໄປເຜົາ ຫຼື ທຳການຕາມຄວາມປາຖະໜາ"

"ບໍ່ຄວນຄິດແນວນັ້ນ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນວ່າ ນັ້ນບໍ່ແມ່ນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາຂອງຂ້າພຣະອົງທັງຫຼາຍຂ້ານ້ອຍ"

"ຢ່າງນັ້ນນັ້ນແລ ພິກຂຸທັງຫຼາຍ ສິ່ງໃດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈຶ່ງລະສິ່ງນັ້ນ ສິ່ງນັ້ນເຊິ່ງທ່ານທັງຫຼາຍລະໄດ້ແລ້ວ ຈັກມີເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານແກ່ທ່ານທັງຫຼາຍ

ອັນໃດນໍ? ບໍ່ແມ່ນຂອງທ່ານທັງຫຼາຍ ຮູບບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈຶ່ງລະຮູບນັ້ນເສຍ ຮູບນັ້ນເຊິ່ງທ່ານທັງຫຼາຍລະໄດ້ແລ້ວ ຈັກມີເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທັງຫຼາຍບໍ່ແມ່ນຂອງທ່ານທັງ

ຫຼາຍ ທ່ານທັງຫຼາຍຈົ່ງລະວິນຍານນັ້ນ ວິນຍານນັ້ນ ເຊິ່ງທ່ານທັງຫຼາຍລະໄດ້ແລ້ວ ຈັກມີເພື່ອປະໂຫຍດ ເພື່ອຄວາມສຸກສິ້ນການລະນານ”

## ລຳດັບພຣະອະຣິຍະບຸກຄົນ

[໔໔໗] ພິກຂຸທັງຫຼາຍ ໃນທຳທີ່ເຮົາກ່າວໄວ້ດີແລ້ວຢ່າງນີ້ ເຊິ່ງເປັນທຳງ່າຍ ເປີດເຜີຍ ຜາກົດ ບໍ່ມີເງື່ອນປົມແລ້ວ ພິກຂຸເຫຼົ່າໃດເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະອະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຊອບ ພິກຂຸເຫຼົ່ານັ້ນ ຍ່ອມບໍ່ມີວັດຕະເພື່ອຈະບັນຍັດຕໍ່ໄປ ໃນທຳທີ່ເຮົາກ່າວໄວ້ດີແລ້ວຢ່າງນີ້ ເຊິ່ງເປັນທຳງ່າຍ ເປີດເຜີຍ ຜາກົດ ບໍ່ມີເງື່ອນປົມແລ້ວ

ພິກຂຸເຫຼົ່າໃດ ລະໂອຣຳພາຄິຍະສັງໂຍດ ໕ ປະການໄດ້ແລ້ວ ພິກຂຸເຫຼົ່ານັ້ນທັງໝົດເປັນໂອປະປາຕິກະປະຣິນິບພານໃນພົມມະໂລກນັ້ນ ບໍ່ຕ້ອງກັບມາຈາກໂລກນັ້ນອີກ ໃນທຳທີ່ເຮົາກ່າວໄວ້ດີແລ້ວຢ່າງນີ້ ເຊິ່ງເປັນທຳງ່າຍ ເປີດເຜີຍ ຜາກົດ ບໍ່ມີເງື່ອນປົມແລ້ວ

ພິກຂຸເຫຼົ່າໃດລະສັງໂຍດ ໓ ປະການໄດ້ແລ້ວ ມີຣາຄະ ໂທສະ ແລະ ໂມຫະເບົາບາງ ພິກຂຸເຫຼົ່ານັ້ນທັງໝົດ ເປັນສະກະທາຄາມີ ມາສູ່ໂລກນີ້ອີກເທື່ອດຽວທໍ່ນັ້ນ ຈັກເຮັດທີ່ສຸດແຫ່ງທຸກໄດ້ ໃນທຳທີ່ເຮົາກ່າວໄວ້ດີແລ້ວຢ່າງນີ້ ເຊິ່ງເປັນທຳງ່າຍ ເປີດເຜີຍ ຜາກົດ ບໍ່ມີເງື່ອນປົມແລ້ວ

ພິກຂຸເຫຼົ່າໃດລະສັງໂຍດ ໓ ປະການ ໄດ້ແລ້ວ ພິກຂຸເຫຼົ່ານັ້ນທັງໝົດ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສັມໂພທິໃນວັນຂ້າງໜ້າ

ພິກຂຸທັງຫຼາຍ ໃນທຳທີ່ເຮົາກ່າວໄວ້ດີແລ້ວຢ່າງນີ້ ເຊິ່ງເປັນທຳງ່າຍ ເປີດເຜີຍ ຜາກົດ ບໍ່ມີເງື່ອນປົມ ພິກຂຸເຫຼົ່າໃດເປັນທຳມານຸດາຣີ ສັດທານຸສາຣີ ພິກຂຸເຫຼົ່ານັ້ນທັງໝົດ ຈະຕັດສະຮູ້ໃນພາຍໜ້າ ໃນທຳທີ່ເຮົາກ່າວໄວ້ດີແລ້ວຢ່າງນີ້ ເຊິ່ງເປັນທຳງ່າຍ ເປີດເຜີຍ ຜາກົດ ບໍ່ມີເງື່ອນປົມແລ້ວ

ບຸກຄົນເຫຼົ່າໃດມີພຽງຄວາມເຊື່ອ ແລະ ຄວາມຮັກໃນເຮົາ ບຸກຄົນເຫຼົ່ານັ້ນທັງໝົດຈະໄດ້ໄປສະຫວັນໃນພາຍໜ້າ”

ເມື່ອພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ອະລະຄັດທູປະມະສູດທີ ໔ ຈົບ**

# ៩. ວໍາມິກະສູດ

## ວ່າດ້ວຍໂພນປວກປິດສະໜາ

[໔໘໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະກຸມານກັດສະປະພັກຢູ່ໃນປ່າອັນທະວັນ

ຄັ້ງນັ້ນ ເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະງົດງາມຍິ່ງໄດ້ເປ່ງຣັດສະໝີໃຫ້ສະຫວ່າງທົ່ວປ່າອັນທະວັນ ເຂົ້າໄປຫາທ່ານພຣະກຸມານກັດສະປະເຖິງທີ່ຢູ່ ແລ້ວໄດ້ຢືນຢູ່ໃນທີ່ສົມຄວນໄດ້ກ່າວກັບທ່ານພຣະກຸມານກັດສະປະ ວ່າ

"ພຣະຜູ້ເປັນເຈົ້າ ໂພນປວກນີ້ຍ່ອມພົ່ນຄວັນໃນເວລາກາງຄືນ ຍ່ອມລຸກຮຸ່ງໃນເວລາກາງເວັນ ພາມໄດ້ກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງນໍາອາວຸດໄປຂຸດເບິ່ງ"

ສຸເມດໃຊ້ອາວຸດໄປຂຸດກໍໄດ້ເຫັນຫຼີ້ມໄລ ຈຶ່ງກ່າວວ່າ "ຫຼີ້ມໄລ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງຍົກຫຼີ້ມໄລຂຶ້ນແລ້ວໃຊ້ອາວຸດຂຸດຕໍ່ໄປ"

ສຸເມດໃຊ້ອາວຸດຂຸດລົງໄປກໍໄດ້ເຫັນອຶ່ງ ຈຶ່ງກ່າວວ່າ "ອຶ່ງ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງນໍາອຶ່ງຂຶ້ນມາ ແລ້ວໃຊ້ອາວຸດຂຸດຕໍ່ໄປ"

ສຸເມດໃຊ້ອາວຸດຂຸດຕໍ່ໄປໄດ້ເຫັນທາງສອງແຍກ ຈຶ່ງກ່າວວ່າ "ທາງສອງແຍກ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງຖາກທາງສອງແຍກອອກເສຍ ແລ້ວໃຊ້ ອາວຸດຂຸດຕໍ່ໄປ"

ສຸເມດໃຊ້ອາວຸດຂຸດຕໍ່ໄປໄດ້ເຫັນໝໍ້ຕອງນໍ້າດ່າງ ຈຶ່ງກ່າວວ່າ "ໝໍ້ຕອງນໍ້າດ່າງ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງຍົກໝໍ້ຕອງນໍ້າດ່າງຂຶ້ນມາ ແລ້ວໃຊ້ອາວຸດຂຸດຕໍ່ໄປ"

ສຸເມດໃຊ້ອາວຸດຂຸດຕໍ່ໄປໄດ້ເຫັນເຕົ່າ ຈຶ່ງກ່າວວ່າ "ເຕົ່າ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງນໍາເຕົ່າຂຶ້ນມາ ແລ້ວໃຊ້ອາວຸດຂຸດຕໍ່ໄປ"

ສຸເມດໃຊ້ອາວຸດຂຸດຕໍ່ໄປໄດ້ເຫັນຂຽງຊອຍຊີ້ນ ຈຶ່ງກ່າວວ່າ "ຂຽງຊອຍຊີ້ນ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງຍົກຂຽງຊອຍຊີ້ນຂຶ້ນມາ ແລ້ວໃຊ້ອາວຸດຂຸດຕໍ່ໄປ"

ສຸເມດໃຊ້ອາວຸດຂຸດຕໍ່ໄປໄດ້ເຫັນຕ່ອນຊີ້ນ ຈຶ່ງກ່າວວ່າ "ຕ່ອນຊີ້ນ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງຈັບຕ່ອນຊີ້ນຂຶ້ນມາ ແລ້ວໃຊ້ອາວຸດຂຸດຕໍ່ໄປ"

ສຸເມດໃຊ້ອາວຸດຂຸດຕໍ່ໄປໄດ້ເຫັນນາກ ຈຶ່ງກ່າວວ່າ "ນາກ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ນາກຈົ່ງດຳລົງຢູ່ເທີ້ນ ທ່ານຢ່າບຽດບຽນນາກເລີຍ ຈົ່ງທຳຄວາມນອບນ້ອມນາກນັ້ນ"

ພຣະຜູ້ເປັນເຈົ້າ ທ່ານຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມບັນຫາທັງ ໕ ຂໍ້ນີ້ ທ່ານຄວນຊົງຈຳຄຳສະເລີຍບັນຫາເຫຼົ່ານັ້ນ ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດຕອບເທີ້ນ ໃນໂລກພ້ອມທັງເທວະໂລກ ມານໂລກ ພົມໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍົກເວັ້ນພຣະຕະຖາຄົດ ຫຼື ສາວົກຂອງພຣະຕະຖາຄົດ ຫຼື ບຸກຄົນຜູ້ຟັງທຳຈາກສຳນັກ (ຂອງຂ້າພະເຈົ້າ) ນີ້ເສຍແລ້ວ ຂ້າພະເຈົ້າຍັງແນມບໍ່ເຫັນບຸກຄົນຜູ້ຈະເຮັດຈິດ (ຂອງຂ້າພະເຈົ້າ) ໃຫ້ຍິນດີດ້ວຍການຕອບບັນຫາເຫຼົ່ານີ້ໄດ້ເລີຍ"

ເທວະດານັ້ນໄດ້ກ່າວຄຳນີ້ແລ້ວກໍອັນຕະຣະທານຫາຍໄປຈາກທີ່ນັ້ນ

## ພຣະກຸມານກັດສະປະທູນຖາມປິດສະໜາທຳ

[໔໕໐] ເມື່ອຄືນນັ້ນຜ່ານໄປ ທ່ານພຣະກຸມານກັດສະປະກໍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຄືນນີ້ເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະງົດງາມຍິ່ງເປັ່ງຣັດສະໝີໃຫ້ສະຫວ່າງທົ່ວປ່າອັນທະວັນ ເຂົ້າມາຫາຂ້າພຣະອົງເຖິງທີ່ຢູ່ ຢືນໃນທີ່ສົມຄວນແລ້ວໄດ້ກ່າວກັບຂ້າພຣະອົງ ວ່າ

"ພຣະຜູ້ເປັນເຈົ້າ ໂພນປວກນີ້ພົ່ນຄວັນໃນເວລາກາງຄືນ ລຸກຮຸ່ງແຈ້ງໃນເວລາກາງເວັນ ພາມໄດ້ກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງນຳອາວຸດໄປຂຸດເບິ່ງ"

ສຸເມດໃຊ້ອາວຸດຂຸດລົງໄປໄດ້ເຫັນຫຼົ້ມໄລ ຈຶ່ງກ່າວວ່າ "ຫຼົ້ມໄລ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ສຸເມດ ທ່ານຈົ່ງຍົກຫຼົ້ມໄລຂຶ້ນແລ້ວໃຊ້ອາວຸດຂຸດຕໍ່ໄປ"

ສຸເມດໃຊ້ອາວຸດຂຸດຕໍ່ໄປກໍໄດ້ເຫັນອຶ່ງ ຈຶ່ງກ່າວວ່າ "ອຶ່ງ ຂ້ານ້ອຍ" ໆລໆ ໄດ້ເຫັນນາກຈຶ່ງກ່າວວ່າ "ນາກ ຂ້ານ້ອຍ"

ພາມກ່າວແນວນີ້ວ່າ "ນາກຈົ່ງດຳລົງຢູ່ເທີ້ນ ທ່ານຢ່າບຽດບຽນນາກນັ້ນເລີຍ ຈົ່ງທຳຄວາມນອບນ້ອມນາກນັ້ນ"

ພຣະຜູ້ເປັນເຈົ້າ ທ່ານຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມບັນຫາທັງ ໕ ຂໍ້ນີ້ແລ້ວ ທ່ານຄວນຊົງຈຳຄຳສະເຫລີຍບັນຫາເຫຼົ່ານັ້ນ ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດຕອບເທີ້ນ ໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍົກເວັ້ນພຣະຕະຖາຄົດ ຫຼື ສາວົກຂອງພຣະຕະຖາຄົດ ຫຼື ບຸກຄົນຜູ້ຟັງຈາກສຳນັກ (ຂອງຂ້າພະເຈົ້າ )ນີ້ແລ້ວ ຂ້າພະເຈົ້າຍັງແນມບໍ່ເຫັນບຸກຄົນຜູ້ຈະເຮັດຈິດ (ຂອງຂ້າພະ

ເຈົ້າ) ໃຫ້ຍິນດີດ້ວຍການຕອບບັນຫາເຫຼົ່ານີ້ໄດ້"

ເທວະດານັ້ນໄດ້ກ່າວຄຳນີ້ແລ້ວ ກໍໄດ້ອັນຕະຣະທານຫາຍໄປຈາກທີ່ນັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ

໑. ອັນໃດນໍ? ຊື່ວ່າ ໂພນປວກ
໒. ຢ່າງໃດ? ຊື່ວ່າ ການພົ່ນຄວັນໃນເວລາກາງຄືນ
໓. ຢ່າງໃດ? ຊື່ວ່າ ການລຸກຮຸ່ງແຈ້ງໃນເວລາກາງເວັນ
໔. ໃຜ? ຊື່ວ່າ ພາມ
໕. ໃຜ? ຊື່ວ່າ ສຸເມດ
໖. ອັນໃດ? ຊື່ວ່າ ອາວຸດ
໗. ຢ່າງໃດ? ຊື່ວ່າ ການຂຸດ
໘. ອັນໃດ? ຊື່ວ່າ ຫຼິ້ມໄລ
໙. ອັນໃດ? ຊື່ວ່າ ອຶ່ງ
໑໐. ອັນໃດ? ຊື່ວ່າ ທາງສອງແຍກ
໑໑. ອັນໃດ? ຊື່ວ່າ ໝໍ້ຕອງນໍ້າດ່າງ
໑໒. ອັນໃດ? ຊື່ວ່າ ເຕົ່າ
໑໓. ອັນໃດ? ຊື່ວ່າ ຊຽງຊອຍຊີ້ນ
໑໔. ອັນໃດ? ຊື່ວ່າ ຕ່ອນຊີ້ນ
໑໕. ອັນໃດ? ຊື່ວ່າ ນາກ"

## ພຣະຜູ້ມີພຣະພາກເຈົ້າຊົງສະເຫລີຍປິດສະໜາທຳ

[໒໕໑] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ

໑. ຄຳວ່າ **ໂພນປວກ** ນັ້ນ ເປັນຊື່ຂອງຮ່າງກາຍນີ້ ເຊິ່ງປະກອບດ້ວຍມະຫາພູຕະຮູບທັງ ໔ ມີມານດາບິດາເປັນແດນເກີດ ເຕີບໂຕດ້ວຍເຂົ້າສຸກແລະເຂົ້າໜົມກຸມມາດ ບໍ່ທ່ຽງ ຕ້ອງບໍລິຫານ ຕ້ອງໄດ້ບຳລຸງຮັກສາ ຈະຕ້ອງແຕກສະຫຼາຍ ແລະ ກະຈັດກະຈາຍໄປເປັນທຳມະດາ
໒. ຄຳວ່າ ຢ່າງໃດ ຊື່ວ່າ **ການພົ່ນຄວັນໃນເວລາກາງຄືນ** ນັ້ນ ໄດ້ແກ່ ການທີ່ບຸກຄົນທຳການງານໃນເວລາກາງເວັນ ແລ້ວຮິ່ນຕອງເຖິງໃນເວລາກາງຄືນ ນີ້ຊື່ວ່າ ການພົ່ນຄວັນໃນເວລາກາງຄືນ
໓. ຄຳວ່າ ຢ່າງໃດ ຊື່ວ່າ **ການລຸກຮຸ່ງໃນເວລາກາງເວັນ** ນັ້ນ ໄດ້ແກ່ ການທີ່ບຸກ

ຄົນຮີ່ນຕອງເຖິງຢູ່ປະຈຳ ໆ ໃນເວລາກາງຄືນ ແລ້ວປະກອບການງານໃນເວລາກາງເວັນ ດ້ວຍກາຍແລະວາຈາ ນີ້ຊື່ວ່າ ການລຸກຮຸ່ງໃນເວລາກາງເວັນ

໔. ຄຳວ່າ **ພານ** ນັ້ນ ເປັນຊື່ຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ

໕. ຄຳວ່າ **ສຸເມດ** ນັ້ນ ເປັນຊື່ຂອງພິກຂຸຜູ້ເປັນເສຂະ

໖. ຄຳວ່າ **ອາວຸດ** ນັ້ນ ເປັນຊື່ແຫ່ງປັນຍາອັນປະເສີດ

໗. ຄຳວ່າ **ຈົ່ງຂຸດ** ນັ້ນ ເປັນຊື່ຂອງການຜາຣົບຄວາມພຽນ

໘. ຄຳວ່າ **ຫຼີ້ມໄລ** ນັ້ນ ເປັນຊື່ແຫ່ງອະວິດຊາ ຄຳນັ້ນມີອະທິບາຍວ່າ "ສຸເມດ ທ່ານຈົ່ງໃຊ້ອາວຸດຍົກຫຼີ້ມໄລຂຶ້ນ ຄື ຈົ່ງລະອະວິດຊາ ຈົ່ງຂຸດຂຶ້ນມາ"

໙. ຄຳວ່າ **ອຶ່ງ** ນັ້ນ ເປັນຊື່ຂອງຄວາມຄັບແຄ້ນໃຈເນື່ອງມາຈາກຄວາມໂກດ ຄຳນັ້ນມີອະທິບາຍວ່າ "ສຸເມດ ທ່ານຈົ່ງໃຊ້ອາວຸດນຳອຶ່ງຂຶ້ນມາ ຄື ຈົ່ງລະຄວາມຄັບແຄ້ນໃຈເນື່ອງມາຈາກຄວາມໂກດ ຈົ່ງຂຸດຂຶ້ນມາ"

໑໐. ຄຳວ່າ **ທາງສອງແຍກ** ນັ້ນ ເປັນຊື່ແຫ່ງວິຈິກິດສາ ຄຳນັ້ນມີອະທິບາຍວ່າ "ສຸເມດ ທ່ານຈົ່ງໃຊ້ອາວຸດຖາກທາງສອງແຍກ ຄື ຈົ່ງລະວິຈິກິດສາ ຈົ່ງຂຸດຂຶ້ນມາ"

໑໑. ຄຳວ່າ **ໝໍ້ຕອງນ້ຳດ່າງ** ນັ້ນ ເປັນຊື່ແຫ່ງນິວອນ ໕ ປະການ ຄື

| | |
|---|---|
| ການສັນທະນິວອນ | (ສິ່ງທີ່ກັ້ນຈິດຄືຄວາມພໍໃຈໃນການ) |
| ພະຍາບາດນິວອນ | (ສິ່ງທີ່ກັ້ນຈິດຄືຄວາມຂັດເຄືອງໃຈ) |
| ຖີນະມິດທະນິວອນ | (ສິ່ງທີ່ກັ້ນຈິດຄືຄວາມຫົດຫູ່ແລະງ່ວມເຫງົາ) |
| ອຸດທັຈດຈະກຸກກຸດຈະນິວອນ | (ສິ່ງທີ່ກັ້ນຈິດຄືຄວາມຟຸ້ງຊ່ານແລະລຳຄານ) |
| ວິຈິກິດສານິວອນ | (ສິ່ງທີ່ກັ້ນຈິດຄືຄວາມລັງເລສົງໄສ) |

ຄຳນັ້ນມີອະທິບາຍວ່າ "ສຸເມດ ທ່ານຈົ່ງໃຊ້ອາວຸດຍົກໝໍ້ຕອງນ້ຳດ່າງຂຶ້ນມາ ຄື ຈົ່ງລະນິວອນ ໕ ປະການ ຈົ່ງຂຸດຂຶ້ນມາ"

໑໔. ຄຳວ່າ **ເຕົ່າ** ນັ້ນ ເປັນຊື່ແຫ່ງອຸປາທານຂັນ[໑] ໕ ປະການ ຄື

| | |
|---|---|
| ຮູປູປາທານະຂັນ | (ອຸປາທານຂັນຄືຮູບ) |
| ເວທະນູປາທານະຂັນ | (ອຸປາທານຂັນຄືເວທະນາ) |
| ສັນຍູປາທານະຂັນ | (ອຸປາທານຂັນຄືສັນຍາ) |
| ສັງຂາຣູປາທານະຂັນ | (ອຸປາທານຂັນຄືສັງຂານ) |
| ວິນຍານູປາທານະຂັນ | (ອຸປາທານຂັນຄືວິນຍານ) |

ຄຳນັ້ນມີອະທິບາຍວ່າ "ສຸເມດ ທ່ານຈົ່ງໃຊ້ອາວຸດນຳເຕົ່າຂຶ້ນມາ ຄື ຈົ່ງລະອຸປາທານຂັນ ໕ ປະການ ຈົ່ງຂຸດຂຶ້ນມາ"

໑໖. ຄຳວ່າ **ຊຽງຊອຍຊີ້ນ** ນັ້ນ ເປັນຊື່ແຫ່ງການມະຄຸນ ໕ ປະການ ຄື

ຮູບທີ່ຈະຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ສຽງທີ່ຈະຮູ້ແຈ້ງທາງຫູ ຯລຯ

ກິ່ນທີ່ຈະຮູ້ແຈ້ງທາງດັງ ຯລຯ

ຣົດທີ່ຈະຮູ້ແຈ້ງທາງລີ້ນ ຯລຯ

ໂຜດຖັບພະທີ່ຈະຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ຄຳນັ້ນມີອະທິບາຍວ່າ "ສຸເມດ ທ່ານຈົ່ງໃຊ້ອາວຸດຍົກຊຽງຊອຍຊີ້ນຂຶ້ນມາ ຄື ຈົ່ງລະກາມມະຄຸນ ໕ ປະການ ຈົ່ງຊຸດຂຶ້ນມາ"

໑໔. ຄຳວ່າ **ຕ່ອນຊີ້ນ** ນັ້ນ ເປັນຊື່ແຫ່ງນັນທິຣາຄະ (ຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ) ຄຳນັ້ນມີອະທິບາຍວ່າ "ສຸເມດ ທ່ານຈົ່ງໃຊ້ອາວຸດຈັບຕ່ອນຊີ້ນຂຶ້ນມາ ຄື ຈົ່ງລະນັນທິຣາຄະ ຈົ່ງຊຸດຂຶ້ນມາ"

໑໕. ຄຳວ່າ **ນາກ** ນັ້ນ ເປັນຊື່ຂອງພິກຂຸຜູ້ເປັນຂີນາສົບ ຄຳນັ້ນມີອະທິບາຍວ່າ "ນາກຈົ່ງດຳລົງຢູ່ເທີ້ນ ທ່ານຢ່າບຽດບຽນນາກເລີຍ ທ່ານຈົ່ງທຳຄວາມນອບນ້ອມນາກ"

ເມື່ອພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະກຸມານກັດສະປະມີໃຈຍິນດີຊົມຊື່ນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ວຳມິກະສູດທີ ໓ ຈົບ**

# ໔. ຣະຖະວິນີຕະສູດ

## ວ່າດ້ວຍຣາດຊະລົດ ໗ ຜັດ

## ພິກຂຸຍົກຍ້ອງພຣະປຸນນະມັນຕານີບຸດ

[໔໕໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ພິກຂຸຜູ້ມີຖິ່ນກຳເນີດດຽວກັນຈຳນວນຫຼາຍ ຈຳພັນສາໃນທ້ອງຖິ່ນ (ຂອງຕົນ) ແລ້ວ ໄດ້ມາເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸເຫຼົ່ານັ້ນ ວ່າ

"ພິກຂຸທັງຫຼາຍ ພິກຂຸອົງໃດນໍ? ທີ່ພິກຂຸເພື່ອນພົມມະຈາຣີໃນທ້ອງຖິ່ນຍົກຍ້ອງ ແນວນີ້ວ່າ "ຕົນເອງເປັນຜູ້ມັກໜ້ອຍ[໖] ແລະກ່າວອັບປິດສະກະຖາ (ເລື້ອງຄວາມມັກໜ້ອຍ) ແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ສັນໂດດ[໑] ແລະ ກ່າວສັນຕຸດຖິກະຖາ (ເລື້ອງຄວາມສັນໂດດ) ແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ສະຫງັດ[໖] ແລະ ກ່າວປະວິເວກກະຖາ (ເລື້ອງຄວາມສະຫງັດ) ແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ບໍ່ຄຸກຄີ[໓] ແລະ ກ່າວອະສັງສັກຄະກະຖາ (ເລື້ອງຄວາມບໍ່ຄຸກຄີ) ແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ຜາຣົບຄວາມພຽນ[໔] ແລະ ກ່າວວິຣິຍາຣັມພະກະຖາ (ເລື້ອງການຜາຣົບຄວາມພຽນ) ແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ສົມບູນດ້ວຍສີນ[໔] ແລະ ກ່າວສີນສຳປະທາກະຖາ (ເລື້ອງຄວາມສົມບູນດ້ວຍສີນ) ແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ສົມບູນດ້ວຍສະມາທິ[໕] ແລະ ກ່າວສະມາທິສຳປະທາກະຖາ (ເລື້ອງຄວາມສົມບູນດ້ວຍສະມາທິ) ແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ສົມບູນດ້ວຍປັນຍາ ແລະ ກ່າວປັນຍາສຳປະທາກະຖາ (ເລື້ອງຄວາມສົມບູນດ້ວຍປັນຍາ) ແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິ ແລະ ກ່າວວິມຸດຕິສຳປະທາກະຖາ (ເລື້ອງຄວາມສົມບູນດ້ວຍວິມຸດຕິ) ແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະ ແລະ ກ່າວວິມຸດຕິຍານທັດສະນະສຳປະທາກະຖາ (ເລື້ອງຄວາມສົມບູນດ້ວຍວິມຸດຕິຍານທັດສະນະ) ແກ່ພິກຂຸທັງຫຼາຍ

ເປັນຜູ້ໃຫ້ໂອວາດ ແນະນຳ ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີທັງຫຼາຍເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສ"

ພິກຂຸທ້ອງຖິ່ນເຫຼົ່ານັ້ນ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະປຸນນະມັນຕານີບຸດເປັນຜູ້ທີ່ພວກພິກຂຸເພື່ອນພົມມະຈາຣີທ້ອງຖິ່ນຍົກຍ້ອງແນວນີ້ວ່າ

ຕົນເອງເປັນຜູ້ມັກໜ້ອຍ ແລະ ກ່າວອັບປິດສະກະຖາແກ່ພິກຂຸທັງຫຼາຍ

ຕົນເອງເປັນຜູ້ສັນໂດດ ຯລຯ

ຕົນເອງເປັນຜູ້ສະຫງັດ ຯລຯ

ຕົນເອງເປັນຜູ້ບໍ່ຄຸກຄີ ຯລຯ

ຕົນເອງເປັນຜູ້ຜາຣົບຄວາມພຽນ ຯລຯ

ຕົນເອງເປັນຜູ້ສົມບູນດ້ວຍສີນ ຯລຯ

ຕົນເອງເປັນຜູ້ສົມບູນດ້ວຍສະມາທິ ຯລຯ
ຕົນເອງເປັນຜູ້ສົມບູນດ້ວຍປັນຍາ ຯລຯ
ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິ ຯລຯ

ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະ ແລະກ່າວວິມຸດຕິຍານທັດສະນະສຳປະທາກະຖາແກ່ພິກຂຸທັງຫຼາຍ

ເປັນຜູ້ໃຫ້ໂອວາດ ແນະນຳ ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີທັງຫຼາຍເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສ"

[໔໕໓] ຂະນະນັ້ນ ທ່ານພຣະສາຣີບຸດໄດ້ນັ່ງເຝົ້າພຣະຜູ້ມີພຣະພາກເຈົ້າຢູ່ໃນທີ່ໃກ້ ໄດ້ມີຄວາມຄິດວ່າ "ເປັນລາບຂອງທ່ານພຣະປຸນນະມັນຕານີບຸດ ທ່ານພຣະປຸນນະມັນຕານີບຸດໄດ້ດີແລ້ວ ທີ່ພວກພິກຂຸເພື່ອນພົມມະຈາຣີຜູ້ເປັນວິນຍູຊົນຄັດເລືອກ ກ່າວຍົກຍ້ອງພັນນາຄຸນສະເພາະພຣະພັກຂອງພຣະສາດສະດາ ແລະ ພຣະສາດສະດາກໍຊົງອະນຸໂມທະນາການກະທຳນັ້ນ ລາງເທື່ອເຮົາຄົງໄດ້ພົບກັບທ່ານພຣະປຸນນະມັນຕານີບຸດແລ້ວ ສົນທະນາປາໄສກັນຈັກເທື່ອໜຶ່ງ"

[໔໕໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນະຄອນຣາດຊະຄຶຕາມພຣະອັດທະຍາໄສແລ້ວ ຈຶ່ງສະເດັດຈາຣິກໄປໂດຍລຳດັບຈົນເຖິງນະຄອນສາວັດຖີ ປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ທ່ານພຣະປຸນນະມັນຕານີບຸດຮູ້ຂ່າວວ່າ "ໄດ້ຍິນວ່າ ພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງນະຄອນສາວັດຖີ ແລ້ວປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ"

## ພຣະປຸນນະມັນຕານີບຸດເຂົ້າເຝົ້າພຣະພຸດທະອົງ

[໔໕໕] ຄັ້ງນັ້ນ ທ່ານພຣະປຸນນະມັນຕານີບຸດ ຈຶ່ງຖືຮັກສາເສນາສະນະ ຖືບາດແລະຈີວອນ ຈາຣິກໄປໂດຍລຳດັບຕາມທາງທີ່ຈະໄປສູ່ນະຄອນສາວັດຖີເຖິງພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ ທີ່ສົມຄວນ ເມື່ອນັ່ງຮຽບຮ້ອຍແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊົງຊີ້ແຈ່ງພຣະປຸນນະມັນຕານີບຸດໃຫ້ເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ລຳດັບນັ້ນ ທ່ານພຣະປຸນນະມັນຕານີບຸດ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍ ທຳມີກະຖາແລ້ວ ໄດ້ຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ລຸກຈາກອາສະນະ ຖວາຍອະພິວາດ ກະທຳປະທັກສິນ ແລ້ວເຂົ້າໄປສູ່ປ່າອັນທະວັນ ເພື່ອພັກຜ່ອນໃນເວລາກາງເວັນ

[໔໕໖] ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປຫາທ່ານພຣະສາຣີບຸດເຖິງທີ່ຢູ່ແລ້ວກ່າວວ່າ "ທ່ານພຣະສາຣີບຸດ ພຣະປຸນນະມັນຕານີບຸດທີ່ທ່ານສັນເສີນຢູ່ເລື້ອຍ ໆ ນັ້ນ (ບັດນີ້) ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ທ່ານກໍຊົມຊື່ນ ຍິນດີພຣະ ພາສິດຂອງພຣະຜູ້ມີພຣະພາກເຈົ້າ ລຸກຈາກອາສະນະຖວາຍອະພິວາດ ກະທຳປະທັກຂິນ ແລ້ວຫຼີກໄປສູ່ປ່າອັນທະວັນເພື່ອພັກຜ່ອນໃນເວລາກາງເວັນ"

ລຳດັບນັ້ນ ທ່ານພຣະສາຣີບຸດຟ້າວຖືຜ້ານິສີທະນະ (ຜ້າຮອງນັ່ງ) ແລ້ວຕິດຕາມທ່ານພຣະປຸນນະມັນຕານີບຸດໄປຂ້າງຫຼັງ ໆ ພໍທີ່ຈະແນມເຫັນກັນໄດ້ ຄັ້ງນັ້ນ ທ່ານພຣະປຸນນະມັນຕານີບຸດ ເຂົ້າໄປໃນປ່າອັນທະວັນ ແລ້ວນັ່ງພັກຜ່ອນໃນເວລາກາງເວັນຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງ ແມ່ນທ່ານພຣະສາຣີບຸດກໍເຂົ້າໄປສູ່ປ່າອັນທະວັນ ແລ້ວນັ່ງພັກຜ່ອນໃນເວລາກາງເວັນຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງຄືກັນ

## ເປົ້າໝາຍແຫ່ງພົມມະຈັນຕາມລຳດັບວິສຸດທິ ໗

ເມື່ອໃນເວລາຄ່ຳ ທ່ານພຣະສາຣີບຸດອອກຈາກບ່ອນຫຼີກລີ້ ແລ້ວ ເຂົ້າໄປຫາທ່ານພຣະປຸນນະມັນຕານີບຸດເຖິງບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະປຸນນະມັນຕານີບຸດ ວ່າ

[໔໕໗] "ທ່ານຜູ້ມີອາຍຸ ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າຂອງເຮົາບໍ?"
ທ່ານພຣະປຸນນະມັນຕານີບຸດຕອບວ່າ "ໂດຍຂ້ານ້ອຍ ທ່ານຜູ້ມີອາຍຸ"
"ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອ ສີລະວິສຸດທິ (ຄວາມບໍລິສຸດແຫ່ງສີນ) ແມ່ນບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"

"ຖ້າເຊັ່ນນັ້ນ ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອ ຈິດຕະວິສຸດທິ (ຄວາມບໍລິສຸດແຫ່ງຈິດ) ແມ່ນບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"

"ຖ້າເຊັ່ນນັ້ນ ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອ ທິດຖິວິສຸດທິ (ຄວາມບໍລິສຸດແຫ່ງທິດຖິ) ແມ່ນບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"

"ຖ້າເຊັ່ນນັ້ນ ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອ ກັງຂາວິຕະຣະນະວິ

ສຸດທິ (ຄວາມບໍລິສຸດແຫ່ງຍານເປັນເຄື່ອງຂ້າມພົ້ນຄວາມສົງໄສ) ແມ່ນບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"

"ຖ້າເຊັ່ນນັ້ນ ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອ ມັກຄາມັກຄະຍານທັດສະນະວິສຸດທິ (ຄວາມບໍລິສຸດແຫ່ງຍານທີ່ຮູ້ເຫັນວ່າເປັນທາງຫຼືບໍ່ແມ່ນທາງ) ແມ່ນບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"

"ຖ້າເຊັ່ນນັ້ນ ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອ ປະຕິປະທາຍານທັດສະນະວິສຸດທິ (ຄວາມບໍລິສຸດແຫ່ງຍານທີ່ຮູ້ເຫັນທາງດຳເນີນ) ແມ່ນບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"

"ຖ້າເຊັ່ນນັ້ນ ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອ ຍານທັດສະນະວິສຸດທິ (ຄວາມບໍລິສຸດແຫ່ງຍານທັດສະນະ) ແມ່ນບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"

"ເມື່ອເຮົາຖາມທ່ານວ່າ "ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອ ສີລະວິສຸດທິ ແມ່ນບໍ?" ທ່ານກໍຕອບເຮົາວ່າ "ຂໍ້ນີ້ ບໍ່ແມ່ນແນວນັ້ນ"

ເມື່ອເຮົາຖາມທ່ານວ່າ "ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອຈິດຕະວິສຸດທິບໍ" ທ່ານກໍຕອບເຮົາວ່າ "ຂໍ້ນີ້ ບໍ່ແມ່ນແນວນັ້ນ"

ເມື່ອເຮົາຖາມທ່ານວ່າ "ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອທິດຖິວິສຸດທິບໍ" ທ່ານກໍຕອບເຮົາວ່າ "ຂໍ້ນີ້ ບໍ່ແມ່ນແນວນັ້ນ"

ເມື່ອເຮົາຖາມທ່ານວ່າ "ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກັງຂາວິຕະຣະນະວິສຸດທິບໍ" ທ່ານກໍຕອບເຮົາວ່າ "ຂໍ້ນີ້ ບໍ່ແມ່ນແນວນັ້ນ"

ຯລຯ ເພື່ອມັກຄາມັກຄະຍານທັດສະນະວິສຸດທິ ແມ່ນບໍ?" ຯລຯ
ຯລຯ ເພື່ອປະຕິປະທາຍານທັດສະນະວິສຸດທິແມ່ນບໍ?" ຯລຯ

ເມື່ອເຮົາຖາມທ່ານວ່າ "ທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອຍານທັດສະນະວິສຸດທິບໍ" ທ່ານກໍຕອບເຮົາວ່າ "ຂໍ້ນີ້ ບໍ່ແມ່ນແນວນັ້ນ"

ເມື່ອເປັນແນວນີ້ ແລ້ວທ່ານປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ເພື່ອອັນໃດກັນແທ້ນໍ?"

"ທ່ານຜູ້ມີອາຍຸ ເຮົາປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອອະນຸປາທາປະຣິ ນິບພານ[១]"
"ສີລະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"
"ຈິດຕະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"
"ທິດຖິວິສຸດທິ ເປັນອະນຸປາທາປະຣິນິບພານບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"
"ກັງຂາວິຕະຣະນະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"
"ມັກຄາມັກຄະຍານທັດສະນະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"
"ປະຕິປະທາຍານທັດສະນະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"
"ຍານທັດສະນະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?"
"ຂໍ້ນີ້ ບໍ່ແມ່ນແນວນັ້ນ"

"ທຳນອກຈາກທຳເຫຼົ່ານີ້ ເປັນອະນຸປາທາປະຣິນິບພານບໍ?"
ພຣະປຸນນະມັນຕານີບຸດຕອບວ່າ "ຂໍ້ນີ້ ບໍ່ໄດ້ເປັນແນວນັ້ນ ທ່ານຜູ້ມີອາຍຸ"
ທ່ານພຣະສາຣີບຸດກ່າວວ່າ "ທ່ານຜູ້ມີອາຍຸ ເມື່ອເຮົາຖາມທ່ານວ່າ "ສີລະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?" ທ່ານກໍຕອບເຮົາວ່າ "ຂໍ້ນີ້ ບໍ່ແມ່ນແນວນັ້ນ"

ເມື່ອເຮົາຖາມທ່ານວ່າ "ຈິດຕະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?" ທ່ານກໍຕອບເຮົາວ່າ "ຂໍ້ນີ້ ບໍ່ແມ່ນແນວນັ້ນ"
ฯລฯ "ທິດຖິວິສຸດທິ ເປັນອະນຸປາທາປະຣິນິບພານບໍ?" ฯລฯ
ฯລฯ "ກັງຂາວິຕະຣະນະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?" ฯລฯ
ฯລฯ "ມັກຄາມັກຄະຍານທັດສະນະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?" ฯລฯ
ฯລฯ "ປະຕິປະທາຍານທັດສະນະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?" ฯລฯ

ເມື່ອເຮົາຖາມທ່ານວ່າ "ຍານທັດສະນະວິສຸດທິ ເປັນອະນຸປາທາປະຣິນິບພານບໍ?" ທ່ານກໍຕອບວ່າ "ຂໍ້ນີ້ ບໍ່ແມ່ນແນວນັ້ນ"

ເມື່ອເຮົາຖາມທ່ານວ່າ "ທຳນອກຈາກທຳເຫຼົ່ານີ້ ເປັນອະນຸປາທາປະຣິນິບພານບໍ?" ທ່ານກໍຕອບເຮົາວ່າ "ຂໍ້ນີ້ ບໍ່ແມ່ນແນວນັ້ນ"

(ເມື່ອເປັນແນວນີ້) ຈະເພິ່ງເຫັນເນື້ອຄວາມຂອງຄຳທີ່ທ່ານກ່າວແລ້ວນີ້ໄດ້ແນວໃດ?"

[໔໕໗] ທ່ານພຣະປຸນນະມັນຕານີບຸດກ່າວວ່າ "ທ່ານຜູ້ມີອາຍຸ ຖ້າພຣະຜູ້ມີພຣະພາກເຈົ້າຊົງບັນຍັດສີລະວິສຸດທິວ່າເປັນອະນຸປາທາປະຣິນິບພານ ກໍຊື່ວ່າ ເພິ່ງບັນຍັດທຳທີ່ຍັງມີອຸປາທານວ່າເປັນອະນຸປາທາປະຣິນິບພານ

ຖ້າຊົງບັນຍັດຈິດຕະວິສຸດທິວ່າ ເປັນອະນຸປາທາປະຣິນິບພານ ກໍຊື່ວ່າ ເພິ່ງບັນຍັດທຳທີ່ຍັງມີອຸປາທານວ່າ ເປັນອະນຸປາທາປະຣິນິບພານ

ຖ້າຊົງບັນຍັດທິດຖິວິສຸດທິວ່າເປັນອະນຸປາທາປະຣິນິບພານ ກໍຊື່ວ່າ ເພິ່ງບັນຍັດທຳທີ່ຍັງມີອຸປາທານວ່າເປັນອະນຸປາທາປະຣິນິບພານ

ຖ້າຊົງບັນຍັດກັງຂາວິຕະຣະນະວິສຸດທິວ່າເປັນອະນຸປາທາປະຣິນິບພານ ກໍຊື່ວ່າເພິ່ງບັນຍັດທຳທີ່ຍັງມີອຸປາທານວ່າເປັນອະນຸປາທາປະຣິນິບພານ

ຖ້າຊົງບັນຍັດມັກຄາມັກຄະຍານທັດສະນະວິສຸດທິວ່າ ເປັນອະນຸປາທາປະຣິນິບພານ ກໍຊື່ວ່າ ເພິ່ງບັນຍັດທຳທີ່ຍັງມີອຸປາທານວ່າເປັນອະນຸປາທາປະຣິນິບພານ

ຖ້າຊົງບັນຍັດປະຕິປະທາຍານທັດສະນະວິສຸດທິວ່າ ເປັນອະນຸປາທາປະຣິນິບພານ ກໍຊື່ວ່າເພິ່ງບັນຍັດທຳທີ່ຍັງມີອຸປາທານວ່າເປັນອະນຸປາທາປະຣິນິບພານ

ຖ້າຊົງບັນຍັດຍານທັດສະນະວິສຸດທິວ່າ ເປັນອະນຸປາທາປະຣິນິບພານ ກໍຊື່ວ່າເພິ່ງບັນຍັດທຳທີ່ຍັງມີອຸປາທານວ່າເປັນອະນຸປາທາປະຣິນິບພານ

ທ່ານຜູ້ມີອາຍຸ ຖ້າທຳນອກຈາກທຳເຫຼົ່ານີ້ ຈັກເປັນອະນຸປາທາປະຣິນິບພານແລ້ວ ປຸຖຸຊົນກໍຈະເພິ່ງປະຣິນິບພານ ຍ້ອນວ່າປຸຖຸຊົນເວັ້ນຈາກທຳເຫຼົ່ານີ້ ເຮົາຈະປຽບທຽບໃຫ້ທ່ານຟັງ ຄົນສະຫຼາດລາງພວກໃນໂລກນີ້ຍ່ອມເຂົ້າໃຈຄວາມໝາຍແຫ່ງຄຳເວົ້າໄດ້ດ້ວຍອຸປະມາໂວຫານ

## ປຽບທຽບວິສຸດທິດ້ວຍລົດ ໗ ຜັດ

[໔໕໘] ທ່ານຜູ້ມີອາຍຸ ປຽບເໝືອນ ພຣະເຈົ້າປະເສນທິໂກສົນກຳລັງປະທັບຢູ່ທີ່ນະຄອນສາວັດຖີ ມີພຣະຣາຊະວຽກງານດ່ວນບາງປະການເກີດຂຶ້ນທີ່ເມືອງສາເກດ ແລະ ໃນລະຫວ່າງນະຄອນສາວັດຖີກັບເມືອງສາເກດນັ້ນ ຈະຕ້ອງຕໍ່ລົດຮອດ ໗ ຜັດ

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນສະເດັດອອກຈາກນະຄອນສາວັດຖີ ຊົງລົດພຣະທີ່ນັ່ງຜັດທີ່ໜຶ່ງ ຢູ່ປະຕູພຣະຣາດຊະວັງ ສະເດັດໄປເຖິງລົດພຣະທີ່ນັ່ງຜັດທີ ໔

ຈຶ່ງຊົງສະລະລົດພຣະທີ່ນັ່ງຜັດທີ ໑ ຊົງລົດພຣະທີ່ນັ່ງຜັດທີ ໒ ສະເດັດໄປເຖິງລົດພຣະທີ່ນັ່ງຜັດທີ ໓

ຈຶ່ງຊົງສະລະລົດພຣະທີ່ນັ່ງຜັດທີ ໒ ຊົງລົດພຣະທີ່ນັ່ງຜັດທີ ໓ ສະເດັດໄປເຖິງລົດພຣະທີ່ນັ່ງຜັດທີ ໔

ຈຶ່ງຊົງສະລະລົດພຣະທີ່ນັ່ງຜັດທີ ໓ ຊົງລົດພຣະທີ່ນັ່ງຜັດທີ ໔ ສະເດັດໄປເຖິງລົດ ພຣະທີ່ນັ່ງຜັດທີ ໕

ຈຶ່ງຊົງສະລະລົດພຣະທີ່ນັ່ງຜັດທີ ໔ ຊົງລົດພຣະທີ່ນັ່ງຜັດທີ ໖ ສະເດັດໄປເຖິງລົດພຣະທີ່ນັ່ງຜັດທີ ໖

ຈຶ່ງຊົງສະລະລົດພຣະທີ່ນັ່ງຜັດທີ ໕ ຊົງລົດພຣະທີ່ນັ່ງຜັດທີ່ຫົກ ສະເດັດໄປເຖິງລົດພຣະທີ່ນັ່ງຜັດທີ ໗

ຈຶ່ງຊົງສະລະລົດພຣະທີ່ນັ່ງຜັດທີ ໖ ຊົງລົດພຣະທີ່ນັ່ງຜັດທີ ໗ ສະເດັດໄປເຖິງປະຕູເມືອງສາເກດດ້ວຍລົດພຣະທີ່ນັ່ງຜັດທີ ໗

ຖ້າພວກມິດອຳມາດ ຫຼື ພຣະບໍຣົມວົງສານຸວົງຈະເພິ່ງທູນຖາມພຣະອົງວ່າ "ຂໍເດຊະມະຫາຣາດເຈົ້າ ພຣະອົງສະເດັດຈາກນະຄອນສາວັດຖີເຖິງປະຕູເມືອງສາເກດດ້ວຍລົດພຣະທີ່ນັ່ງຜັດດຽວເທົ່ານັ້ນບໍ?"

ທ່ານຜູ້ມີອາຍຸ ພຣະເຈົ້າປະເສນທິໂກສົນຈະຕັດຕອບຢ່າງໃດ ຈຶ່ງຈະຈັດວ່າຕັດຕອບຢ່າງຖືກຕ້ອງ"

ທ່ານພຣະສາຣີບຸດກ່າວວ່າ "ທ່ານຜູ້ມີອາຍຸ ພຣະເຈົ້າປະເສນທິໂກສົນຈະຕ້ອງຕັດຕອບຢ່າງນີ້ ຈຶ່ງຈັດວ່າຕັດຕອບຢ່າງຖືກຕ້ອງ ຄື ຕັດວ່າ "ເມື່ອເຮົາກຳລັງຢູ່ໃນນະຄອນສາວັດຖີນັ້ນ ມີວຽກງານດ່ວນບາງປະການເກີດຂຶ້ນໃນເມືອງສາເກດ ລະຫວ່າງນະຄອນສາວັດຖີກັບເມືອງສາເກດນັ້ນ ຈະຕ້ອງໃຊ້ລົດເຖິງ ໗ ຜັດ

ຄັ້ງນັ້ນແລ ເຮົາໄດ້ອອກຈາກນະຄອນສາວັດຖີຂຶ້ນລົດຜັດທີ ໑ ຢູ່ປະຕູວັງ ໄປເຖິງລົດຜັດທີ ໒ ສະລະລົດຜັດທີ ໑ ຂຶ້ນລົດຜັດທີ ໒ ໄປເຖິງລົດຜັດທີ ໓ ສະລະລົດຜັດທີ ໒ ຂຶ້ນລົດຜັດທີ ໓ ໄປເຖິງລົດຜັດທີ ໔ ສະລະລົດຜັດທີ ໓ ຂຶ້ນລົດຜັດທີ ໔ ໄປເຖິງລົດຜັດທີ ໕ ສະລະລົດຜັດທີ ໔ ຂຶ້ນລົດຜັດທີ ໕ ໄປເຖິງລົດຜັດທີ ໖ ສະລະລົດຜັດທີ ໕ ຂຶ້ນລົດຜັດທີ ໖ ໄປເຖິງລົດຜັດທີ ໔ ສະລະລົດຜັດທີ ໖ ຂຶ້ນລົດຜັດທີ ໗ ໄປເຖິງປະຕູເມືອງສາເກດດ້ວຍລົດຜັດທີ ໗"

ທ່ານຜູ້ມີອາຍຸ ພຣະເຈົ້າປະເສນທິໂກສົນຈະຕ້ອງຕັດຕອບຢ່າງນີ້ ຈຶ່ງຈັດວ່າຕັດຕອບຢ່າງຖືກຕ້ອງ"

ທ່ານພຣະປຸນນະມັນຕານີບຸດກ່າວວ່າ "ທ່ານຜູ້ມີອາຍຸ ຂໍ້ນີ້ກໍຄືກັນສັນນັ້ນ ສີລະວິສຸດທິມີຈິດຕະວິສຸດທິເປັນເປົ້າໝາຍ ຈິດຕະວິສຸດທິມີທິດຖິວິສຸດທິເປັນເປົ້າໝາຍ ທິດຖິວິສຸດທິ ມີກັງຂາວິຕະຣະນະວິສຸດທິເປັນເປົ້າໝາຍ ກັງຂາວິຕະຣະນະວິສຸດທິມີມັກຄາມັກຄະຍານທັດສະນະວິສຸດທິເປັນເປົ້າໝາຍ ມັກຄາມັກຄະຍານທັດສະນະວິສຸດທິ ມີປະຕິປະທາຍານທັດສະນະວິສຸດທິເປັນເປົ້າໝາຍ ປະຕິປະທາຍານທັດສະນະວິສຸດທິ ມີຍານທັດສະນະວິສຸດທິເປັນເປົ້າໝາຍ ຍານທັດສະນະວິສຸດທິມີອະນຸປາທາປະຣິນິບພານເປັນເປົ້າໝາຍ"

ທ່ານຜູ້ມີອາຍຸ ເຮົາຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ເພື່ອອະນຸປາທາປະຣິນິບພານທໍ່ນັ້ນ"

## ພຣະເຖຣະທັງ ໔ ອົງກ່າວສັນເສີນຄຸນຂອງກັນແລະກັນ

[໔໙໐] ເມື່ອທ່ານພຣະປຸນນະມັນຕານີບຸດກ່າວແນວນີ້ແລ້ວ ທ່ານພຣະສາຣີບຸດ ຈຶ່ງຖາມວ່າ "ທ່ານຜູ້ມີອາຍຸ ທ່ານຊື່ຫຍັງ? ແລະ ເພື່ອນພົມມະຈາຣີຮູ້ຈັກທ່ານວ່າຢ່າງໃດ?"

ທ່ານພຣະປຸນນະມັນຕານີບຸດຕອບວ່າ "ທ່ານຜູ້ມີອາຍຸ ເຮົາຊື່ວ່າ ປຸນນະ ແຕ່ເພື່ອນພົມມະຈາຣີທັງຫຼາຍຮູ້ຈັກເຮົາວ່າ ມັນຕານີບຸດ"

ທ່ານພຣະສາຣີບຸດກ່າວວ່າ "ທ່ານຜູ້ມີອາຍຸ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດບັນຫາອັນເລິກເຊິ່ງ ທີ່ທ່ານພຣະປຸນນະມັນຕານີບຸດຄັດເລືອກ ນຳມາກ່າວແກ້ດ້ວຍປັນຍາອັນເລິກເຊິ່ງຕາມແບບຢ່າງພຣະສາວົກຜູ້ໄດ້ສະດັບແລ້ວ ຮູ້ທົ່ວເຖິງຄຳສອນຂອງພຣະສາດສະດາໂດຍຖ່ອງແທ້ຈະເພິ່ງກ່າວແກ້ສັນນັ້ນ ເປັນລາບຢ່າງຫຼາຍຂອງເພື່ອນພົມມະຈາຣີທັງຫຼາຍ ເພື່ອນພົມມະຈາຣີທັງຫຼາຍໄດ້ດີແລ້ວ ທີ່ໄດ້ພົບເຫັນ ໄດ້ນັ່ງໃກ້ທ່ານປຸນນະມັນຕານີບຸດ ແມ່ນຫາກເພື່ອນພົມມະຈາຣີທັງຫຼາຍ ຈະເທີດທູນທ່ານປຸນນະມັນຕານີບຸດໄວ້ເທິງຫົວເໜືອນເທຣິດຜ້າ ຈຶ່ງຈະໄດ້ພົບເຫັນໄດ້ນັ່ງໃກ້ ແມ່ນຂໍ້ນັ້ນ ກໍນັບວ່າເປັນລາບຫຼາຍຂອງທ່ານເຫຼົ່ານັ້ນ ທ່ານເຫຼົ່ານັ້ນໄດ້ດີແລ້ວ ອັນໜຶ່ງນັບວ່າ ເປັນລາບຢ່າງຫຼາຍຂອງເຮົາດ້ວຍ ເຮົາໄດ້ດີແລ້ວທີ່ໄດ້ພົບເຫັນ ໄດ້ນັ່ງໃກ້ທ່ານປຸນນະມັນຕານີບຸດ"

ເມື່ອທ່ານພຣະສາຣີບຸດກ່າວແນວນີ້ແລ້ວ ທ່ານພຣະປຸນນະມັນຕານີບຸດຈຶ່ງຖາມວ່າ "ທ່ານຜູ້ມີອາຍຸ ທ່ານຊື່ອັນໃດ ແລະ ເພື່ອນພົມມະຈາຣີທັງຫຼາຍຮູ້ຈັກທ່ານວ່າຢ່າງໃດ?"

ທ່ານພຣະສາຣີບຸດຕອບວ່າ "ທ່ານຜູ້ມີອາຍຸ ເຮົາຊື່ວ່າ ອຸປະຕິດສະ ແຕ່ເພື່ອນພົມມະຈາຣີທັງຫຼາຍຮູ້ຈັກເຮົາວ່າ "ສາຣີບຸດ"

ທ່ານພຣະປຸນນະມັນຕານີບຸດກ່າວວ່າ "ທ່ານຜູ້ຈະເລີນ ເຮົາກຳລັງເວົ້າຢູ່ກັບທ່ານຜູ້ເປັນ

ສາວົກ ຜູ້ຊົງຄຸນຄ້າຍກັບພຣະບໍຣົມມະສາດສະດາ ບໍ່ຮູ້ເລີຍວ່າ "ທ່ານຊື່ວ່າ ສາຣີບຸດ" ຖ້າເຮົາຮູ້ວ່າ "ທ່ານຊື່ສາຣີບຸດ" ຄໍາປຽບທຽບທໍ່ນີ້ ຄົງບໍ່ຈໍາເປັນສໍາລັບຂ້າພະເຈົ້າ ໜ້າອັດສະຈັນຈິງແທ້ ບໍ່ເຄີຍຜາກົດ ບັນຫາອັນເລິກເຊິ່ງທີ່ທ່ານສາຣີບຸດຄັດເລືອກມາຖາມແລ້ວດ້ວຍປັນຍາອັນເລິກເຊິ່ງເອົາແບບຢ່າງພຣະສາວົກຜູ້ໄດ້ສະດັບແລ້ວ ຮູ້ທົ່ວເຖິງຄໍາສອນຂອງພຣະບໍຣົມມະສາດສະດາໂດຍຖ່ອງແທ້ຈະເພິ່ງຖາມສັນນັ້ນ ເປັນລາບຢ່າງຫຼາຍຂອງເພື່ອນພົມມະຈາຣີທັງຫຼາຍ ເພື່ອນພົມມະຈາຣີທັງຫຼາຍໄດ້ດີແລ້ວທີ່ໄດ້ພົບເຫັນ ໄດ້ນັ່ງໃກ້ ທ່ານພຣະສາຣີບຸດ ແມ່ນຫາກເພື່ອນພົມມະຈາຣີທັງຫຼາຍ ຈະເທີດທູນທ່ານພຣະສາຣີບຸດໄວ້ເທິງຫົວເໝືອນເທຣິດຜ້າ ຈຶ່ງຈະໄດ້ພົບເຫັນ ໄດ້ນັ່ງໃກ້ ແມ່ນຂໍ້ນັ້ນ ກໍເປັນລາບຢ່າງຫຼາຍຂອງທ່ານເຫຼົ່ານັ້ນ ທ່ານເຫຼົ່ານັ້ນໄດ້ດີແລ້ວ ອັນໜຶ່ງ ນັບວ່າເປັນລາບຢ່າງຫຼາຍຂອງເຮົາດ້ວຍ ເຮົາໄດ້ດີແລ້ວທີ່ໄດ້ພົບເຫັນ ໄດ້ນັ່ງໃກ້ທ່ານສາຣີບຸດ"

ພຣະມະຫານາຄະທັງ ໘ ອົງນັ້ນ ຕ່າງຊົມຊື່ນພາສິດຂອງກັນແລະກັນ ດັ່ງນີ້ແລ

**ຣະຖະວິນີຕະສູດທີ ໔ ຈົບ**

## ໕. ນິວາປະສູດ

### ວ່າດ້ວຍເຫຍື່ອລໍ່ເນື້ອ

[໔໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ນາຍພານເນື້ອບໍ່ໄດ້ປູກຫຍ້າໄວ້ສໍາລັບໝູ່ເນື້ອດ້ວຍຄິດວ່າ "ເມື່ອໝູ່ເນື້ອກິນຫຍ້າທີ່ເຮົາປູກໄວ້ນີ້ຈະມີອາຍຸໝັ້ນຍືນ ມີຜິວພັນດີ ມີຊີວິດຢູ່ຍືນຍາວ" ແທ້ທີ່ຈິງ ນາຍພານເນື້ອປູກຫຍ້າໄວ້ສໍາລັບໝູ່ເນື້ອດ້ວຍມີຄວາມປະສົງວ່າ "ຝູງເນື້ອທີ່ເຂົ້າມາສູ່ທົ່ງຫຍ້າທີ່ເຮົາປູກໄວ້ນີ້ແລ້ວຈັກລືມໂຕກິນຫຍ້າ ເມື່ອເຂົ້າມາແລ້ວລືມໂຕກິນຫຍ້າກໍຈັກເຜີໂຕ ເມື່ອເຜີໂຕກໍຈັກບໍ່ລະວັງໂຕ ເມື່ອລະວັງໂຕກໍຈັກຖືກເຮົາເຮັດຫຍັງ ໆ ໄດ້ຕາມໃຈມັກໃນທົ່ງຫຍ້ານີ້"

## ຝູງເນື້ອທີ່ຖືກນາຍພານຈັບ

[໔໖໔] ພິກຂຸທັງຫຼາຍ ບັນດາໝູ່ເນື້ອເຫຼົ່ານັ້ນ ເນື້ອໝູ່ທີ ໑ ເຂົ້າໄປສູ່ທົ່ງຫຍ້າທີ່ນາຍພານປູກໄວ້ແລ້ວລືມໂຕກິນຫຍ້າຢູ່ ເມື່ອເຂົ້າໄປແລ້ວລືມໂຕກິນຫຍ້າຢູ່ກໍເຜີໂຕ ເມື່ອເຜີໂຕກໍບໍ່ລະວັງໂຕ ເມື່ອບໍ່ລະວັງໂຕກໍຖືກນາຍພານເນື້ອເຮັດຫຍັງ ໆ ໄດ້ຕາມໃຈມັກໃນທົ່ງຫຍ້ານັ້ນ ເມື່ອເປັນແນວນີ້ ເນື້ອໝູ່ທີ ໑ ນັ້ນກໍບໍ່ລອດພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້

[໔໖໕] ພິກຂຸທັງຫຼາຍ ເນື້ອໝູ່ທີ ໒ ຄິດເຫັນຮ່ວມກັນແນວນີ້ວ່າ "ເນື້ອໝູ່ທີ ໑ ທີ່ເຂົ້າໄປໃນທົ່ງຫຍ້າຂອງນາຍພານເນື້ອ ລືມໂຕກິນຫຍ້າຢູ່ ເມື່ອເຂົ້າໄປແລ້ວລືມໂຕກິນຫຍ້າຢູ່ກໍເຜີໂຕເມື່ອເຜີໂຕກໍບໍ່ລະວັງໂຕ ເມື່ອບໍ່ລະວັງໂຕກໍຖືກນາຍພານເນື້ອເຮັດຫຍັງໄດ້ຕາມໃຈມັກໃນທົ່ງຫຍ້ານັ້ນ ເມື່ອເປັນແນວນີ້ ເນື້ອໝູ່ທີ ໑ ກໍບໍ່ລອດພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້ ທາງທີ່ດີເຮົາຄວນງົດກິນຫຍ້າໂດຍເດັດຂາດ ເມື່ອງົດກິນຫຍ້າທີ່ເປັນໄພແລ້ວ ຄວນໜີໄປຢູ່ຕາມປ່າລຶກ" ແລ້ວຈຶ່ງງົດກິນຫຍ້າໂດຍເດັດຂາດ ເມື່ອງົດກິນຫຍ້າທີ່ເປັນໄພແລ້ວ ກໍຫຼີກໄປຢູ່ຕາມປ່າລຶກ ເມື່ອເຖິງເດືອນສຸດທ້າຍແຫ່ງລະດູຮ້ອນ ເຊິ່ງເປັນເວລາທີ່ຫຍ້າແລະນ້ຳໝົດສິ້ນແລ້ວ ໝູ່ເນື້ອໝູ່ນັ້ນກໍມີຮ່າງກາຍຊູບຜອມ ເມື່ອມີຮ່າງກາຍຊູບຜອມ ກຳລັງເຫື່ອແຮງກໍໝົດໄປ ເມື່ອກຳລັງເຫື່ອແຮງໝົດໄປ ຈຶ່ງພາກັນກັບມາສູ່ທົ່ງຫຍ້າທີ່ນາຍພານນັ້ນປູກໄວ້ອີກ ເນື້ອໝູ່ທີ່ ໒ ນັ້ນພາກັນເຂົ້າໄປໃນທົ່ງຫຍ້ານັ້ນ ລືມໂຕກິນຫຍ້າຢູ່ ເມື່ອເຂົ້າໄປແລ້ວລືມໂຕກິນຫຍ້າຢູ່ກໍເຜີໂຕ ເມື່ອເຜີໂຕກໍບໍ່ລະວັງໂຕເມື່ອບໍ່ລະວັງໂຕກໍຖືກນາຍພານເນື້ອເຮັດຫຍັງໄດ້ຕາມໃຈມັກໃນທົ່ງຫຍ້ານັ້ນ ເມື່ອເປັນແນວນີ້ແມ່ນເນື້ອໝູ່ທີ ໒ ກໍບໍ່ລອດພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້

[໔໖໖] ພິກຂຸທັງຫຼາຍ ເນື້ອໝູ່ທີ ໓ ຄິດເຫັນຮ່ວມກັນແນວນີ້ວ່າ "ເນື້ອໝູ່ທີ ໑ ເຂົ້າໄປໃນທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ ຯລຯ ເມື່ອເປັນແນວນີ້ ເນື້ອໝູ່ທີ ໑ ກໍບໍ່ລອດ ພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້ ແລະ ເນື້ອໝູ່ທີ ໒ ຄິດເຫັນຮ່ວມກັນແນວນີ້ວ່າ "ເນື້ອໝູ່ທີ່ ໑ ເຂົ້າໄປສູ່ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ ຯລຯ ເມື່ອເປັນແນວນີ້ ເນື້ອໝູ່ທີ່ ໑ ກໍບໍ່ລອດພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້ ທາງທີ່ດີ ພວກເຮົາຄວນງົດກິນຫຍ້າໂດຍເດັດຂາດ ເມື່ອງົດກິນຫຍ້າທີ່ເປັນໄພແລ້ວ ຄວນໜີໄປຢູ່ຕາມປ່າ" ຈຶ່ງງົດກິນຫຍ້າ ໂດຍເດັດຂາດ ເມື່ອງົດກິນຫຍ້າທີ່ເປັນໄພແລ້ວ ກໍຫຼີກໄປຢູ່ຕາມປ່າ ເມື່ອເຖິງເດືອນສຸດທ້າຍແຫ່ງລະດູຮ້ອນເຊິ່ງເປັນເວລາທີ່ຫຍ້າແລະນ້ຳໝົດສິ້ນ ເນື້ອໝູ່ນັ້ນມີຮ່າງກາຍຊູບຜອມ ເມື່ອມີຮ່າງກາຍຊູບຜອມ ກຳລັງເຫື່ອແຮງກໍໝົດໄປເມື່ອກຳລັງເຫື່ອແຮງໝົດໄປ ຈຶ່ງພາກັນກັບມາສູ່ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນອີກ ເນື້ອໝູ່ນັ້ນພາກັນເຂົ້າໄປສູ່ທົ່ງຫຍ້ານັ້ນ ລືມໂຕກິນຫຍ້າຢູ່ ເມື່ອເຂົ້າໄປແລ້ວລືມໂຕກິນຫຍ້າຢູ່ກໍເຜີໂຕ ເມື່ອເຜີໂຕກໍບໍ່ລະວັງໂຕ ເມື່ອລະວັງໂຕກໍຖືກນາຍພານເນື້ອເຮັດຫຍັງໄດ້ຕາມໃຈມັກໃນທົ່ງຫຍ້ານັ້ນເມື່ອເປັນແນວນີ້ ແມ່ນເນື້ອໝູ່ທີ ໒ ນັ້ນກໍບໍ່ລອດພົ້ນຈາກອຳນາດຂອງນາຍພານໄປໄດ້ ທາງທີ່ດີພວກເຮົາຄວນຊຸ່ມອາໄສຢູ່ໃກ້ ໆ ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນ ແລ້ວເຮົາຈະບໍ່ເຂົ້າໄປສູ່ທົ່ງ

ຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນ ຈັກບໍ່ລືມໂຕກິນຫຍ້າຢູ່ ເມື່ອບໍ່ເຂົ້າໄປແລ້ວບໍ່ລືມໂຕກິນຫຍ້າຢູ່ກໍ ຈັກບໍ່ເຜີໂຕ ເມື່ອບໍ່ເຜີໂຕກໍຈັກລະວັງໂຕ ເມື່ອລະວັງໂຕກໍຈັກບໍ່ຖືກນາຍພານເນື້ອເຮັດຫຍັງໄດ້ ຕາມໃຈມັກໃນທົ່ງຫຍ້ານັ້ນ" ແລ້ວຈຶ່ງເຂົ້າໄປຊຸ່ມອາໄສຢູ່ໃກ້ ໆ ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ ນັ້ນ ເມື່ອຊຸ່ມອາໄສຢູ່ໃກ້ ໆ ທົ່ງຫຍ້ານັ້ນແລ້ວ ກໍບໍ່ເຂົ້າໄປສູ່ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນ ບໍ່ລືມໂຕກິນຫຍ້າຢູ່ ເມື່ອບໍ່ເຂົ້າໄປໃນທົ່ງຫຍ້ານັ້ນບໍ່ລືມໂຕກິນຫຍ້າຢູ່ກໍບໍ່ເຜີໂຕ ເມື່ອບໍ່ເຜີໂຕກໍ ລະວັງໂຕ ເມື່ອລະວັງໂຕກໍບໍ່ຖືກນາຍພານເນື້ອເຮັດຫຍັງໄດ້ຕາມໃຈມັກໃນທົ່ງຫຍ້ານັ້ນ

ພິກຂຸທັງຫຼາຍ ຄັ້ງນັ້ນ ນາຍພານເນື້ອກັບບໍລິວານມີຄວາມຄິດວ່າ "ເນື້ອໝູ່ທີ ໓ ນີ້ເປັນ ສັດສະຫຼາດເໝືອນມີລິດ ບໍ່ແມ່ນສັດທຳມະດາ ຈຶ່ງກິນຫຍ້າທີ່ປູກໄວ້ນີ້ໄດ້ໂດຍບໍ່ຖືກຈັບໂຕ ເຮົາບໍ່ ຮູ້ທັງທາງມາ ແລະ ທາງໄປຂອງພວກມັນ ທາງທີ່ດີ ພວກເຮົາຄວນເອົາໄມ້ມາຂັດເປັນຕາໜ່າງ ລ້ອມຮອບທົ່ງຫຍ້າທີ່ປູກໄວ້ນີ້ ບາງເທື່ອເຮົາຈະພົບບ່ອນຢູ່ຂອງເນື້ອໝູ່ທີ ໓ ໃນບ່ອນເຊິ່ງເຮົາຈະ ໄປຈັບພວກມັນມາໄດ້" ພວກເຂົາຈຶ່ງຊ່ອຍກັນເອົາໄມ້ມາຂັດເປັນຕາໜ່າງລ້ອມຮອບທົ່ງຫຍ້າທີ່ປູກ ໄວ້ນັ້ນ ນາຍພານເນື້ອກັບບໍລິວານກໍໄດ້ພົບບ່ອນຢູ່ຂອງເນື້ອໝູ່ທີ ໓ ໃນບ່ອນເຊິ່ງເຂົາໄປຈັບພວກ ມັນໄດ້ແລ້ວ ເມື່ອເປັນແນວນີ້ ແມ່ນເນື້ອໝູ່ທີ ໓ ນັ້ນກໍບໍ່ລອດພົ້ນຈາກອຳນາດຂອງນາຍພານ ເນື້ອໄປໄດ້

## ໝູ່ເນື້ອທີ່ລອດມືນາຍພານ

[໔໓໕] ພິກຂຸທັງຫຼາຍ ເນື້ອໝູ່ທີ ໔ ຄິດເຫັນຮ່ວມກັນແນວນີ້ວ່າ "ເນື້ອໝູ່ທີ ໑ ຯລຯ ເມື່ອເປັນແນວນີ້ ເນື້ອໝູ່ທີ ໑ ກໍບໍ່ລອດພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້ ແລະ ເນື້ອໝູ່ ທີ ໔ ຄິດເຫັນຮ່ວມກັນແນວນີ້ວ່າ "ເນື້ອໝູ່ທີ ໑ ຯລຯ ເມື່ອເປັນແນວນີ້ ເນື້ອໝູ່ ທີ ໑ ນັ້ນກໍບໍ່ ລອດພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້ ທາງທີ່ດີ ພວກເຮົາຄວນງົດກິນຫຍ້າໂດຍ ເດັດຂາດ ເມື່ອງົດກິນຫຍ້າທີ່ເປັນໄພແລ້ວ ກໍຫຼີກໄປຢູ່ຕາມປ່າ" ແລ້ວຈຶ່ງງົດກິນຫຍ້າໂດຍ ເດັດຂາດ ຯລຯ ເມື່ອເປັນແນວນີ້ ແມ່ນເນື້ອໝູ່ທີ ໔ ນັ້ນກໍບໍ່ລອດພົ້ນຈາກອຳນາດຂອງນາຍພານ ເນື້ອໄປໄດ້

ອັນໜຶ່ງ ເນື້ອໝູ່ທີ ໓ ຄິດເຫັນຮ່ວມກັນແນວນີ້ວ່າ "ເນື້ອໝູ່ທີ ໑ ຯລຯ ເມື່ອເປັນ ແນວນີ້ "ເນື້ອໝູ່ທີ່ ໑ ນັ້ນກໍບໍ່ລອດພົ້ນຈາກອຳນາດຂອງນາຍພານໄປໄດ້" ແລະ ເນື້ອໝູ່ທີ ໔ ຄິດເຫັນ ຮ່ວມກັນແນວນີ້ວ່າ "ເນື້ອໝູ່ທີ ໑ ຯລຯ ເມື່ອເປັນແນວນີ້ ເນື້ອໝູ່ທີ ໑ ນັ້ນກໍບໍ່ລອດ ພົ້ນຈາກ ອຳນາດຂອງນາຍພານເນື້ອໄປໄດ້ ທາງທີ່ດີ ເຮົາຄວນງົດກິນຫຍ້າໂດຍເດັດຂາດ ເມື່ອງົດກິນ ຫຍ້າທີ່ເປັນໄພແລ້ວ ກໍຫຼີກໄປຢູ່ຕາມປ່າ" ແລ້ວຈຶ່ງງົດກິນຫຍ້າໂດຍເດັດຂາດ ຯລຯ ເມື່ອເປັນ ແນວນີ້ ແມ່ນເນື້ອໝູ່ທີ ໔ ນັ້ນກໍບໍ່ລອດພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້ ທາງທີ່ດີ ພວກເຮົາຄວນຊຸ່ມອາໄສຢູ່ໃກ້ ໆ ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນ ແລ້ວເຮົາຈະບໍ່ເຂົ້າໄປສູ່ທົ່ງ

ຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນ ຈະບໍ່ລືມໂຕກິນຫຍ້າ ເມື່ອບໍ່ເຂົ້າໄປແລ້ວ ບໍ່ລືມໂຕກິນຫຍ້າຢູ່ກໍຈັກບໍ່ເຜີໂຕ ເມື່ອບໍ່ເຜີໂຕກໍຈັກລະວັງໂຕ ເມື່ອລະວັງໂຕກໍຈັກບໍ່ຖືກນາຍພານເນື້ອເຮັດຫຍັງ ໆ ໄດ້ຕາມໃຈມັກໃນທົ່ງຫຍ້ານັ້ນ" ແລ້ວຈຶ່ງເຂົ້າໄປຊຸ່ມອາໄສຢູ່ໃກ້ ໆ ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນ ເມື່ອຊຸ່ມອາໄສຢູ່ໃກ້ ໆ ທົ່ງຫຍ້ານັ້ນແລ້ວ ບໍ່ເຂົ້າໄປສູ່ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນ ບໍ່ລືມໂຕກິນຫຍ້າຢູ່ ເມື່ອບໍ່ເຂົ້າໄປສູ່ທົ່ງຫຍ້ານັ້ນ ບໍ່ລືມໂຕກິນຫຍ້າຢູ່ກໍບໍ່ເຜີໂຕ ເມື່ອບໍ່ເຜີໂຕກໍລະວັງໂຕ ເມື່ອລະວັງໂຕກໍບໍ່ຖືກນາຍພານເນື້ອເຮັດຫຍັງໄດ້ຕາມໃຈມັກໃນທົ່ງຫຍ້ານັ້ນ

ຄັ້ງນັ້ນ ນາຍພານເນື້ອກັບບໍລິວານມີຄວາມຄິດວ່າ "ເນື້ອໝູ່ທີ ໓ ນີ້ເປັນສັດສະຫຼາດເໝືອນມີລິດ ບໍ່ແມ່ນສັດທຳມະດາ ໆລໆ ນາຍພານເນື້ອກັບບໍລິວານກໍໄດ້ພົ້ບ່ອນຢູ່ຂອງເນື້ອໝູ່ທີ ໓ ໃນບ່ອນເຊິ່ງເຂົາຈະໄປຈັບພວກມັນໄດ້ ເມື່ອເປັນແນວນີ້ ແມ່ນເນື້ອໝູ່ທີ ໓ ນັ້ນກໍບໍ່ລອດພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້ ທາງທີ່ດີ ພວກເຮົາຄວນອາໄສຢູ່ໃນບ່ອນເຊິ່ງນາຍພານເນື້ອກັບບໍລິວານໄປບໍ່ເຖິງ ແລ້ວບໍ່ຄວນເຂົ້າໄປສູ່ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນ ເມື່ອບໍ່ລືມໂຕກິນຫຍ້າກໍຈັກບໍ່ເຜີໂຕ ເມື່ອບໍ່ເຜີໂຕກໍຈັກລະວັງໂຕ ເມື່ອລະວັງໂຕກໍຈັກບໍ່ຖືກນາຍພານເນື້ອເຮັດຫຍັງໄດ້ຕາມໃຈມັກໃນທົ່ງຫຍ້ານັ້ນ" ແລ້ວຈຶ່ງຊຸ່ມອາໄສຢູ່ໃນບ່ອນເຊິ່ງນາຍພານເນື້ອກັບບໍລິວານໄປບໍ່ເຖິງ ເມື່ອຊຸ່ມອາໄສຢູ່ໃນບ່ອນນັ້ນແລ້ວກໍບໍ່ເຂົ້າໄປສູ່ທົ່ງຫຍ້າທີ່ນາຍພານເນື້ອປູກໄວ້ນັ້ນ ບໍ່ລືມໂຕກິນຫຍ້າຢູ່ ເມື່ອບໍ່ເຂົ້າໄປສູ່ທົ່ງຫຍ້ານັ້ນບໍ່ລືມໂຕກິນຫຍ້າຢູ່ກໍບໍ່ເຜີໂຕ ເມື່ອບໍ່ເຜີໂຕກໍລະວັງໂຕ ເມື່ອລະວັງໂຕກໍຈັກບໍ່ຖືກນາຍພານເນື້ອເຮັດຫຍັງໄດ້ຕາມໃຈມັກໃນທົ່ງຫຍ້ານັ້ນ

ພິກຂຸທັງຫຼາຍ ຄັ້ງນັ້ນ ພານເນື້ອກັບບໍລິວານຄິດເຫັນວ່າ "ເນື້ອໝູ່ທີ ໔ ນີ້ເປັນສັດສະຫຼາດເໝືອນມີລິດ ບໍ່ແມ່ນສັດທຳມະດາ ຈຶ່ງກິນຫຍ້າທີ່ປູກໄວ້ນີ້ໄດ້ ອັນໜຶ່ງ ເຮົາບໍ່ຮູ້ທາງມາແລະທາງໄປຂອງພວກມັນເລີຍ ທາງທີ່ດີ ພວກເຮົາຄວນເອົາໄມ້ມາຂັດເປັນຕາໜ່າງລ້ອມຮອບທົ່ງຫຍ້າທີ່ປູກໄວ້ໂດຍຮອບ ບາງເທື່ອເຮົາຈະພົ້ບ່ອນຢູ່ຂອງເນື້ອໝູ່ທີ ໔ ໃນບ່ອນເຊິ່ງເຮົາຈະໄປຈັບພວກມັນໄດ້" ພວກເຂົາຈຶ່ງເອົາໄມ້ມາຂັດເປັນຕາໜ່າງລ້ອມຮອບທົ່ງຫຍ້າທີ່ປູກໄວ້ນັ້ນ ແຕ່ກໍບໍ່ພົ້ບ່ອນຢູ່ຂອງເນື້ອໝູ່ທີ ໔ ໃນບ່ອນເຊິ່ງຕົນຈະໄປຈັບເອົາ ຄັ້ງນັ້ນ ນາຍພານເນື້ອ ກັບບໍລິວານຈຶ່ງຄິດຕົກລົງໃຈວ່າ "ຖ້າເຮົາຈັກຂືນລົບກວນເນື້ອໝູ່ທີ ໔ ໃຫ້ຕົກໃຈ ເນື້ອເຫຼົ່ານັ້ນ ທີ່ຖືກເຮົາເຮັດໃຫ້ຕົກໃຈແລ້ວກໍຈະເຮັດໃຫ້ເນື້ອໝູ່ອື່ນ ໆ ຕົກໃຈໄປດ້ວຍ ໝູ່ເນື້ອທັງຫຼາຍຄົງຈະໄປຈາກທົ່ງຫຍ້າທີ່ປູກໄວ້ຈົນໝົດສິ້ນ ທາງທີ່ດີ ພວກເຮົາຄວນວາງເສີຍໃນເນື້ອໝູ່ທີ ໔ ສາ" ນາຍພານເນື້ອກັບບໍລິວານກໍວາງເສີຍເນື້ອໝູ່ທີ ໔ ສາ ເມື່ອເປັນແນວນີ້ ເນື້ອໝູ່ທີ ໔ ຈຶ່ງລອດພົ້ນຈາກອຳນາດຂອງນາຍພານເນື້ອໄປໄດ້

[໒໕໓] ພິກຂຸທັງຫຼາຍ ເຮົາຈະປຽບທຽບເພື່ອໃຫ້ເຂົ້າໃຈເນື້ອຄວາມໄດ້ຊັດເຈນຍິ່ງຂຶ້ນໃນຄຳປຽບທຽບນັ້ນ ມີຄຳອະທິບາຍດັ່ງຕໍ່ໄປນີ້

ຄຳວ່າ ທົ່ງຫຍ້າ ນັ້ນ ເປັນຊື່ແຫ່ງກາມມະຄຸນ ໕

ຄຳວ່າ ນາຍພານເນື້ອ ນັ້ນ ເປັນຊື່ຂອງມານຜູ້ມີບາບ

ຄຳວ່າ ບໍລິວານຂອງນາຍພານເນື້ອ ນັ້ນ ເປັນຊື່ຂອງບໍລິວານຂອງມານ

ຄຳວ່າ ໝູ່ເນື້ອ ນັ້ນ ເປັນຊື່ຂອງສະມະນະພາມທັງຫຼາຍ

## ປຽບທຽບນັກບວດກັບໝູ່ເນື້ອ

[໔໗໗] ພິກຂຸທັງຫຼາຍ ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມພວກທີ ໑ ເຂົ້າໄປຫາກາມມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດແລ້ວລືມໂຕບໍຣິໂພກກາມມະຄຸນ ໕ ເມື່ອເຂົ້າໄປຫາກາມມະຄຸນ ໕ ນັ້ນ ລືມໂຕບໍຣິໂພກກາມມະຄຸນ ໕ ກໍມົວເມົາ ເມື່ອມົວເມົາກໍຜະໝາດ ເມື່ອຜະໝາດກໍຖືກມານເຮັດຫຍັງໄດ້ຕາມໃຈມັກໃນກາມມະຄຸນ ໕ ນັ້ນ ເມື່ອເປັນແນວນີ້ ສະມະນະພາມພວກທີ ໑ ນັ້ນກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້

ພິກຂຸທັງຫຼາຍ ເຮົາກ່າວສະມະນະພາມພວກທີ່ ໑ ວ່າ ປຽບເໝືອນເນື້ອຝູງທີ ໑ ນັ້ນ

[໔໗໘] ພິກຂຸທັງຫຼາຍ ສະມະນະພາມພວກທີ ໒ ຄິດເຫັນຮ່ວມກັນແນວນີ້ວ່າ "ສະມະນະພາມພວກທີ່ ໑ ເຂົ້າໄປຫາກາມມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດແລ້ວ ລືມໂຕບໍຣິໂພກກາມມະຄຸນ ໕ ເມື່ອເຂົ້າໄປຫາກາມມະຄຸນ ໕ ນັ້ນແລ້ວລືມໂຕບໍຣິໂພກກາມມະຄຸນ ໕ ກໍມົວເມົາ ເມື່ອມົວເມົາກໍຜະໝາດ ເມື່ອຜະໝາດກໍຖືກມານເຮັດຫຍັງໄດ້ຕາມໃຈມັກໃນກາມມະຄຸນ ໕ ນັ້ນ ເມື່ອເປັນແນວນີ້ ແມ່ນສະມະນະພາມພວກທີ ໑ ນັ້ນກໍບໍ່ພົ້ນຈາກອຳນາດຂອງມານໄດ້ ທາງທີ່ດີພວກເຮົາຄວນງົດບໍຣິໂພກກາມມະຄຸນ ໕ ອັນເປັນໂລກາມິດໂດຍເດັດຂາດ ເມື່ອງົດບໍຣິໂພກທີ່ເປັນໄພແລ້ວ ຄວນໜີໄປຢູ່ໃນແຖວປ່າ" ແລ້ວຈຶ່ງງົດບໍຣິໂພກກາມມະຄຸນ ໕ ອັນເປັນໂລກາມິດໂດຍເດັດຂາດ ເມື່ອງົດບໍຣິໂພກທີ່ເປັນໄພແລ້ວກໍຫຼີກໄປຢູ່ຕາມແຖວປ່າ ສະມະນະພາມເຫຼົ່ານັ້ນມີສົ້ມຜັກເປັນອາຫານແດ່ ມີເຂົ້າຟ່າງເປັນອາຫານແດ່ ມີໝາກເດືອຍເປັນອາຫານແດ່ ມີກາກເຂົ້າເປັນອາຫານແດ່ ມີສາຫຣ່າຍເປັນອາຫານແດ່ ມີຣຳເປັນອາຫານແດ່ ມີເຂົ້າກົ້ນໝໍ້ເປັນອາຫານແດ່ ມີກຳຍານເປັນອາຫານແດ່ ມີຫຍ້າເປັນອາຫານແດ່ ມີມູນງົວເປັນອາຫານແດ່ ມີເຫງົ້າໄມ້ແລະໝາກໄມ້ໃນປ່າເປັນອາຫານແດ່ ບໍຣິໂພກໝາກໄມ້ທີ່ຫຼົ່ນເອງ ດຳລົງອັດຕະພາບຢູ່ໃນແຖວປ່ານັ້ນ ເມື່ອເຖິງເດືອນສຸດທ້າຍແຫ່ງລະດູຮ້ອນ ເຊິ່ງເປັນເວລາທີ່ອາຫານ (ປ່າ) ແລະນ້ຳໝົດລົງແລ້ວ ທ່ານເຫຼົ່ານັ້ນກໍມີຮ່າງກາຍຈ່ອຍແຫ້ງ ເມື່ອມີຮ່າງກາຍ ຈ່ອຍແຫ້ງກຳລັງເຫື່ອແຮງກໍມົດໄປ ເມື່ອກຳລັງເຫື່ອແຮງມົດໄປ ເຈໂຕວິມຸດຕິກໍເສື່ອມ ເມື່ອເຈໂຕວິມຸດຕິເສື່ອມແລ້ວ ພວກທ່ານກໍກັບຫັນໜ້າເຂົ້າຫາກາມມະຄຸນ ໕ ອັນເປັນໂລກາມິດນັ້ນອີກ ເມື່ອເຂົ້າໄປຫາແລ້ວລືມໂຕບໍຣິໂພກກາມ

ມະຄຸນ ໕ ກໍມົວເມົາ ເມື່ອມົວເມົາກໍຜະໝາດ ເມື່ອຜະໝາດກໍຖືກມານເຮັດຫຍັງໄດ້ຕາມໃຈມັກໃນການມະຄຸນ ໕ ນັ້ນ ເມື່ອເປັນແນວນີ້ ແມ່ນສະມະນະພາມພວກທີ ໔ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້

ພິກຂຸທັງຫຼາຍ ເຮົາກ່າວສະມະນະພາມພວກທີ ໔ ນີ້ ປຽບເໝືອນຊີ້ນຝູງທີ ໔ ນັ້ນ

[໔໕໑] ພິກຂຸທັງຫຼາຍ ສະມະນະພາມພວກທີ ໓ ຄິດເຫັນຮ່ວມກັນແນວນີ້ວ່າ "ສະມະນະພາມພວກທີ ໑ ໆລໆ ເມື່ອເປັນແນວນີ້ ສະມະນະພາມພວກທີ ໑ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້ ແລະ ສະມະນະພາມພວກທີ ໔ ຄິດເຫັນຮ່ວມກັນແນວນີ້ວ່າ "ສະມະນະພາມພວກທີ ໑ ໆລໆ ເມື່ອເປັນແນວນີ້ ສະມະນະພາມພວກທີ ໑ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້ ທາງທີ່ດີ ພວກເຮົາຄວນງົດບໍຣິໂພກການມະຄຸນ ໕ ອັນເປັນ ໂລກາມິດໂດຍເດັດຂາດ ເມື່ອງົດບໍຣິໂພກທີ່ເປັນໄພແລ້ວ ຄວນໜີໄປຢູ່ຕາມປ່າ" ແລ້ວຈຶ່ງງົດບໍຣິໂພກການມະຄຸນ ໕ ອັນເປັນໂລກາມິດໂດຍເດັດຂາດ ເມື່ອງົດບໍຣິໂພກທີ່ເປັນໄພແລ້ວກໍຫຼີກໄປຢູ່ຕາມປ່າ ທ່ານເຫຼົ່ານັ້ນມີສົ້ມຜັກເປັນອາຫານແດ່ ໆລໆ ບໍຣິໂພກໝາກໄມ້ທີ່ຫຼົ່ນເອງດຳລົງອັດຕະພາບຢູ່ໃນແຖວປ່ານັ້ນ ເມື່ອເຖິງເດືອນສຸດທ້າຍແຫ່ງລະດູຮ້ອນເຊິ່ງເປັນເວລາທີ່ອາຫານແລະນ້ຳໝົດສິ້ນ ທ່ານເຫຼົ່ານັ້ນກໍມີຮ່າງກາຍຈ່ອຍແຫ້ງ ເມື່ອມີຮ່າງກາຍຈ່ອຍແຫ້ງ ກຳລັງເຫື່ອແຮງກໍມົດໄປ ເມື່ອກຳລັງເຫື່ອແຮງມົດໄປ ເຈໂຕວິມຸດຕິກໍເສື່ອມ ເມື່ອເຈໂຕວິມຸດຕິເສື່ອມແລ້ວ ພວກທ່ານກໍກັບຫັນໜ້າເຂົ້າຫາການມະຄຸນ ໕ ອັນເປັນໂລກາມິດນັ້ນອີກ ເມື່ອເຂົ້າໄປຫາແລ້ວລືມໂຕບໍຣິໂພກການມະຄຸນ ໕ ກໍມົວເມົາ ເມື່ອມົວເມົາກໍຜະໝາດ ເມື່ອຜະໝາດ ກໍຖືກມານເຮັດຫຍັງກໍໄດ້ຕາມໃຈມັກໃນການມະຄຸນ ໕ ນັ້ນ ເມື່ອເປັນແນວນີ້ ແມ່ນສະມະນະພາມພວກທີ ໔ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້ ທາງທີ່ດີ ພວກເຮົາ ຄວນຈະເຂົ້າໄປອາໄສຢູ່ໃກ້ ໆ ການມະຄຸນ ໕ ອັນເປັນໂລກາມິດນັ້ນ ເມື່ອອາໄສຢູ່ໃກ້ ໆ ແລ້ວກໍບໍ່ເຂົ້າໄປຫາການມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດ ບໍ່ລືມໂຕ ບໍຣິໂພກການມະຄຸນ ໕ ເມື່ອບໍ່ລືມໂຕບໍຣິໂພກການມະຄຸນ ໕ ກໍຈະບໍ່ມົວເມົາ ເມື່ອບໍ່ມົວເມົາກໍຈະບໍ່ຜະໝາດ ເມື່ອບໍ່ຜະໝາດກໍຈະບໍ່ຖືກມານເຮັດຫຍັງໄດ້ຕາມໃຈມັກໃນການມະຄຸນ ໕ ນັ້ນ" ຈຶ່ງອາໄສຢູ່ໃກ້ ໆ ການມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດນັ້ນ ເມື່ອອາໄສຢູ່ໃກ້ ໆ ການມະຄຸນ ໕ ແລ້ວ ບໍ່ເຂົ້າໄປຫາການມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດ ບໍ່ລືມໂຕບໍຣິໂພກການມະຄຸນ ໕ ເມື່ອບໍ່ລືມໂຕບໍຣິໂພກການມະຄຸນ ໕ ກໍບໍ່ມົວເມົາ ເມື່ອບໍ່ມົວເມົາກໍບໍ່ຜະໝາດ ເມື່ອບໍ່ຜະໝາດກໍບໍ່ຖືກມານເຮັດຫຍັງໄດ້ຕາມໃຈມັກໃນການມະຄຸນນັ້ນ ແຕ່ສະມະນະພາມເຫຼົ່ານັ້ນມີທິດຖິແນວນີ້ວ່າ "ໂລກທ່ຽງ ຫຼື ໂລກບໍ່ທ່ຽງ ໂລກມີທີ່ສຸດ ຫຼື ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນຢ່າງດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ເມື່ອ

ເປັນແບບນີ້ ສະມະນະພາມພວກທີ ໓ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງ ມານໄປໄດ້

ພິກຂຸທັງຫຼາຍ ເຮົາກ່າວວ່າສະມະນະພາມພວກທີ່ ໓ ນີ້ປຽບເໝືອນຊີ້ນຝູງ ທີ ໓ ນັ້ນ

[໔໗໐] ພິກຂຸທັງຫຼາຍ ສະມະນະພາມພວກທີ ໔ ມີຄວາມຄິດເຫັນຮ່ວມກັນ

ແບບນີ້ວ່າ "ສະມະນະພາມພວກທີ ໑ ຯລຯ ເມື່ອເປັນແບບນີ້ ສະມະນະພາມພວກທີ ໑ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້ ແລະ ສະມະນະພາມພວກທີ ໔ ມີຄວາມຄິດເຫັນຮ່ວມກັນແບບນີ້ວ່າ "ສະມະນະພາມພວກທີ ໑ ຯລຯ ເມື່ອເປັນແບບນີ້ ສະມະນະພາມພວກທີ ໑ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້ ທາງທີ່ດີ ພວກເຮົາຄວນງົດບໍຣິໂພກກາມມະຄຸນ ໕ ອັນເປັນໂລກາມິດໂດຍເດັດຂາດ ເມື່ອງົດບໍຣິໂພກທີ່ເປັນໄພແລ້ວ ຄວນໜີໄປຢູ່ຕາມປ່າ ທ່ານເຫຼົ່ານັ້ນງົດເວັ້ນຈາກກາມມະຄຸນ ໕ ທີ່ເປັນໂລກາມິດໂດຍເດັດຂາດ ຯລຯ ເມື່ອເປັນແບບນີ້ ແມ່ນສະມະນະພາມພວກທີ ໔ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້

ອັນໜຶ່ງ ສະມະນະພາມພວກທີ ໓ ມີຄວາມຄິດເຫັນຮ່ວມກັນແບບນີ້ວ່າ "ສະມະນະພາມພວກທີ ໑ ຯລຯ ເມື່ອເປັນແບບນີ້ ສະມະນະພາມພວກທີ ໑ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້ ແລະ ສະມະນະພາມພວກທີ ໔ ມີຄວາມຄິດເຫັນຮ່ວມກັນແບບນີ້ວ່າ "ສະມະນະພາມພວກທີ ໑ ຯລຯ ເມື່ອເປັນແບບນີ້ ສະມະນະພາມພວກທີ ໑ ນັ້ນກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້ ທາງທີ່ດີ ພວກເຮົາຄວນງົດບໍຣິໂພກກາມມະຄຸນ ໕ ອັນເປັນໂລກາມິດໂດຍເດັດຂາດ ເມື່ອງດບໍຣິໂພກທີ່ເປັນໄພແລ້ວ ຄວນໜີໄປຢູ່ຕາມປ່າ ທ່ານເຫຼົ່ານັ້ນງົດບໍຣິໂພກກາມມະຄຸນ ໕ ອັນເປັນໂລກາມິດ ຯລຯ ເມື່ອເປັນແບບນີ້ ແມ່ນສະມະນະພາມພວກທີ ໔ ນັ້ນກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປອາໄສຢູ່ໃກ້ ໆ ກາມມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດ ເມື່ອອາໄສຢູ່ໃກ້ ໆ ກາມມະຄຸນ ໕ ແລ້ວກໍບໍ່ເຂົ້າໄປຫາກາມມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດ ບໍ່ລືມໂຕບໍຣິໂພກກາມມະຄຸນ ໕ ເມື່ອບໍ່ລືມໂຕບໍຣິໂພກກາມມະຄຸນ ໕ ກໍບໍ່ມົວເມົາ ເມື່ອບໍ່ມົວເມົາກໍບໍ່ຜະໝາດ ເມື່ອບໍ່ຜະໝາດກໍບໍ່ຖືກມານເຮັດຫຍັງໄດ້ຕາມໃຈມັກໃນກາມມະຄຸນ ໕ ນັ້ນ" ແລ້ວຈຶ່ງອາໄສຢູ່ໃກ້ ໆ ກາມມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດນັ້ນ ເມື່ອອາໄສຢູ່ໃກ້ ໆ ກາມມະຄຸນ ໕ ແລ້ວກໍບໍ່ເຂົ້າໄປຫາກາມມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດ ບໍ່ລືມໂຕບໍຣິໂພກກາມມະຄຸນ ໕ ເມື່ອບໍ່ລືມໂຕບໍຣິໂພກກາມມະຄຸນ ໕ ກໍບໍ່ມົວເມົາ ເມື່ອບໍ່ມົວເມົາກໍບໍ່ຜະໝາດ ເມື່ອບໍ່ຜະໝາດກໍບໍ່ຖືກມານເຮັດຫຍັງ ໆ ໄດ້ຕາມໃຈມັກໃນກາມມະຄຸນ ໕ ນັ້ນ ແຕ່ສະມະນະພາມເຫຼົ່ານັ້ນ ມີທິດຖິແບບນີ້ວ່າ "ໂລກທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ເມື່ອເປັນແບບນີ້ ແມ່ນສະມະນະພາມພວກທີ ໓ ນັ້ນ ກໍບໍ່ພົ້ນຈາກອຳນາດຂອງມານໄປໄດ້ ທາງທີ່ດີ ພວກເຮົາຄວນອາໄສຢູ່ໃນບ່ອນເຊິ່ງມານ ແລະ ບໍລິວານຂອງມານໄປບໍ່ເຖິງ ເມື່ອອາໄສຢູ່ໃນບ່ອນນັ້ນແລ້ວກໍບໍ່

ເຂົ້າໄປຫາກາມມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດ ບໍ່ລືມໂຕບໍຣິໂພກກາມມະຄຸນ ໕ ເມື່ອບໍ່ລືມໂຕບໍຣິໂພກກາມມະຄຸນ ໕ ກໍບໍ່ມົວເມົາ ເມື່ອບໍ່ມົວເມົາກໍບໍ່ຜະໝາດ ເມື່ອບໍ່ຜະໝາດກໍບໍ່ຖືກມານເຮັດຫຍັງໄດ້ຕາມໃຈມັກໃນກາມມະຄຸນ ໕ ນັ້ນ" ແລ້ວຈຶ່ງອາໄສຢູ່ໃນບ່ອນເຊິ່ງມານແລະບໍລິວານຂອງມານໄປບໍ່ເຖິງ ເມື່ອອາໄສໃນບ່ອນນັ້ນແລ້ວບໍ່ເຂົ້າໄປຫາກາມມະຄຸນ ໕ ທີ່ມານລໍ່ໄວ້ເຊິ່ງເປັນໂລກາມິດນັ້ນ ບໍ່ລືມໂຕບໍຣິໂພກກາມມະຄຸນ ໕ ເມື່ອບໍ່ລືມໂຕບໍຣິໂພກກາມມະຄຸນ ໕ ກໍບໍ່ມົວເມົາ ເມື່ອບໍ່ມົວເມົາກໍບໍ່ຜະໝາດ ເມື່ອບໍ່ຜະໝາດກໍບໍ່ຖືກມານເຮັດຫຍັງໄດ້ຕາມໃຈມັກໃນກາມມະຄຸນ ໕ ເຊິ່ງເປັນໂລກາມິດນັ້ນ ເມື່ອເປັນແນວນີ້ ສະມະນະພາມພວກທີ ໔ ນັ້ນ ຈຶ່ງພົ້ນຈາກອຳນາດຂອງມານໄປໄດ້

ພິກຂຸທັງຫຼາຍ ເຮົາກ່າວວ່າສະມະນະພາມພວກທີ ໔ ນີ້ປຽບເໝືອນຊີ້ນຝູງທີ ໔ ນັ້ນ

## ແດນທີ່ມານຕາມໄປບໍ່ເຖິງ

[໔໗໑] ທີ່ເຊິ່ງມານ ແລະ ບໍລິວານຂອງມານໄປບໍ່ເຖິງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປິຕິ ແລະ ສຸກອັນເກີດຈາກວິເວກຢູ່ ເຮົາຮຽກພິກຂຸນີ້ວ່າ "ໄດ້ເຮັດມານໃຫ້ຕາບອດ ຄື ທຳລາຍໜ່ວຍຕາຂອງມານຢ່າງບໍ່ມີຮ່ອງຮອຍ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິ ແລະ ສຸກອັນເກີດຈາກສະມາທິຢູ່ ເຮົາຮຽກພິກຂຸນີ້ວ່າ "ຯລຯ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນປິຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ເຮົາຮຽກພິກຂຸນີ້ວ່າ "ຯລຯ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປ ກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ເຮົາຮຽກພິກຂຸນີ້ວ່າ "ໄດ້ເຮັດມານໃຫ້ຕາບອດ ຄື ທຳລາຍໜ່ວຍຕາຂອງມານສາຢ່າງບໍ່ມີຮ່ອງຮອຍ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນລ່ວງອົງສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ພິກຂຸບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ເຮົາຮຽກພິກຂຸນີ້ວ່າ "ໄດ້ເຮັດມານໃຫ້ຕາບອດ ຄື ທຳລາຍໜ່ວຍຕາຂອງມານເສຍຢ່າງ

ບໍ່ມີຮ່ອງຮອຍ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸວິນຍານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ເຮົາຮຽກພິກຂຸນີ້ວ່າ "ຯລຯ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸອາກິນຈັນຍາຍະຕະນະຊານຢູ່ໂດຍກຳນົດວ່າ "ບໍ່ມີອັນໃດ" ເຮົາຮຽກພິກຂຸນີ້ວ່າ "ຯລຯ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ເຮົາຮຽກພິກຂຸນີ້ວ່າ "ຯລຯ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ພິກຂຸທັງຫຼາຍ ອີກປະການໜຶ່ງ ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸສັນຍາເວທະຍິຕະນິໂຣດຢູ່ ກໍຍ້ອນເຫັນດ້ວຍປັນຍາ ທ່ານຍ່ອມມີອາສະວະສິ້ນໄປ ເຮົາຮຽກພິກຂຸນີ້ວ່າ "ໄດ້ເຮັດມານໃຫ້ຕາບອດ ຄື ທຳລາຍໜ່ວຍຕາຂອງມານສາຍ່າງບໍ່ມີຮ່ອງຮອຍ ເຖິງການທີ່ມານໃຈບາບແນມບໍ່ເຫັນ ແລະ ຂ້າມພົ້ນຕັນຫາອັນເປັນເຄື່ອງຂ້ອງຢູ່ໃນໂລກໄດ້ແລ້ວ"

ພຣະຜູ້ມີພຣະພາກເຈົ້າຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ນິວາປະສູດທີ ໕ ຈົບ**

# ໖. ປາສະຣາສິສູດ

## ວ່າດ້ວຍກອງບ່ວງດັກສັດ

[໔໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປບິນທະບາດໃນກຣຸງສາວັດຖີ

ຄັ້ງນັ້ນ ພິກຂຸເປັນຈຳນວນຫຼາຍ ເຂົ້າໄປຫາທ່ານພຣະອານົນເຖິງທີ່ຢູ່ແລ້ວໄດ້ກ່າວກັບທ່ານພຣະອານົນວ່າ "ທ່ານພຣະອານົນ ເປັນເວລາດົນຫຼາຍແລ້ວທີ່ພວກຂ້າພະເຈົ້າບໍ່ໄດ້ສະດັບທຳມີກະຖາໃນບ່ອນສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ຂໍໂອກາດໃຫ້ພວກຂ້າພະເຈົ້າໄດ້ສະດັບ ທຳມີກະຖາໃນບ່ອນສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າດ້ວຍເທີ້ນ"

ທ່ານພຣະອານົນຕອບວ່າ "ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງພາກັນໄປສູ່ອາສົມຂອງຣຳມະກະພາມ ກໍຈັກໄດ້ສະດັບທຳມີກະຖາໃນບ່ອນສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ"

ພິກຂຸເຫຼົ່ານັ້ນ ຮັບຄຳທ່ານພຣະອານົນແລ້ວ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດທ່ຽວບິນທະບາດໃນນະຄອນສາວັດຖີ ສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ໄດ້ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ "ມາເທີ້ນ ອານົນ ເຮົາຈະໄປພັກກາງເວັນທີ່ຜາສາດຂອງມິຄາຣະມາຕາໃນບຸບພາຣາມ"

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງສະເດັດພ້ອມກັບທ່ານພຣະອານົນໄປພັກກາງເວັນທີ່ຜາສາດຂອງມິຄາຣະມາຕາໃນບຸບພາຣາມ ເມື່ອໃນເວລາຄ່ຳມາຮອດ ພຣະຜູ້ມີພຣະພາກເຈົ້າ ສະເດັດອອກຈາກບ່ອນຫຼີກລີ້ແລ້ວ ຕັດກັບທ່ານພຣະອານົນວ່າ

"ມາເທີ້ນ ອານົນ ເຮົາຈັກໄປອາບນ້ຳທີ່ທ່າບຸບພະໂກດຖະກະ"

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ

## ມາຣະຍາດໃນການປະຊຸມ

[໔໗໑] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ພ້ອມກັບທ່ານພຣະອານົນໄດ້ໄປອາບນ້ຳຢູ່ທ່າບຸບພະໂກດຖະກະແລ້ວ ສະເດັດຂຶ້ນ (ຈາກທ່າ) ຊົງຄອງຈີວອນຜືນດຽວປະທັບຢືນຕາກພຣະວໍຣະກາຍຢູ່ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອາສົມຂອງຣຳມະກະພາມຢູ່ບໍ່ໄກ ທັງເປັນສະຖານທີ່ໜ້າອອນຊອນ ແລະ ໜ້າເຫຼື້ອມໃສ ຂໍພຣະຜູ້ມີພຣະພາກເຈົ້າ ສະເດັດໄປສູ່ອາສົມຂອງຣຳມະກະພາມ ເພື່ອຊົງອະນຸເຄາະດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າ ຊົງຮັບໂດຍດຸດສະນີພາບແລ້ວ ໄດ້ສະເດັດເຂົ້າໄປສູ່ອາສົມຂອງຣຳມະກະພາມ

ສະໄໝນັ້ນ ພິກຂຸຈຳນວນຫຼາຍ ນັ່ງສົນທະນາທຳມີກະຖາຢູ່ໃນອາສົມຂອງຣຳມະກະພາມ

ພຣະຜູ້ມີພຣະພາກເຈົ້າປະທັບຢືນຢູ່ນອກຊຸ້ມປະຕູ ຊົງຄອຍຖ້າໃຫ້ພິກຂຸສົນທະນາກັນຈົບກ່ອນ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ການສົນທະນາຈົບລົງແລ້ວ ຈຶ່ງຊົງອະແຮມ ແລ້ວເຄາະບານປະຕູ ພິກຂຸເຫຼົ່ານັ້ນ ໄຂປະຕູຮັບພຣະຜູ້ມີພຣະພາກເຈົ້າແລ້ວ

ພຣະຜູ້ມີພຣະພາກເຈົ້າ ສະເດັດເຂົ້າໄປສູ່ອາສົມຂອງຣຳມະກະພາມແລ້ວ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ແລ້ວຈຶ່ງຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເວລານີ້ ທ່ານທັງຫຼາຍນັ່ງສົນທະນາກັນດ້ວຍເລື້ອງອັນໃດ ເວົ້າເລື້ອງອັນໃດຄ້າງໄວ້ ອັນໃດທີ່ທ່ານທັງຫຼາຍສົນທະນາກັນຄ້າງໄວ້ຢູ່"

ພິກຂຸທັງຫຼາຍຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍຜາຣົບພຣະຜູ້ມີພຣະພາກເຈົ້າແລ້ວ ສົນທະນາທຳມີກະຖາຄ້າງໄວ້ ພໍດີພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ພິກຂຸທັງຫຼາຍ ຂໍ້ທີ່ທ່ານທັງຫຼາຍຜູ້ເປັນກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ ປະຊຸມສົນທະນາທຳມີກະຖາກັນນັ້ນ ເປັນເລື້ອງສົມຄວນ ທ່ານທັງຫຼາຍຜູ້ມາປະຊຸມກັນມີກິດທີ່ຄວນເຮັດ ໒ ປະການ ຄື (໑) ການສົນທະນາທຳ (໒) ການເປັນຜູ້ນິ່ງຢ່າງພຣະອະຣິຍະ

## ການສະແຫວງຫາທີ່ບໍ່ປະເສີດ

[໒໗໔] ພິກຂຸທັງຫຼາຍ ການສະແຫວງຫາມີ ໒ ຢ່າງ ຄື (໑) ການສະແຫວງຫາທີ່ປະເສີດ (໒) ການສະແຫວງຫາທີ່ບໍ່ປະເສີດ

ການສະແຫວງຫາທີ່ບໍ່ປະເສີດ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ຕົນເອງມີຄວາມເກີດເປັນທຳມະດາ ແຕ່ກໍຍັງສະແຫວງຫາສິ່ງທີ່ມີຄວາມເກີດເປັນທຳມະດາຢູ່ອີກ ຕົນເອງມີຄວາມແກ່ເປັນທຳມະດາ ແຕ່ກໍຍັງສະແຫວງຫາສິ່ງທີ່ມີຄວາມແກ່ເປັນທຳມະດາຢູ່ອີກ ຕົນເອງມີຄວາມເຈັບໄຂ້ເປັນທຳມະດາ ແຕ່ກໍຍັງສະແຫວງຫາສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາຢູ່ອີກ ຕົນເອງມີຄວາມຕາຍເປັນທຳມະດາ ແຕ່ກໍຍັງສະແຫວງຫາສິ່ງທີ່ມີຄວາມຕາຍເປັນທຳມະດາຢູ່ອີກ ຕົນເອງມີຄວາມເສົ້າໂສກເປັນທຳມະດາ ແຕ່ກໍຍັງສະແຫວງຫາສິ່ງທີ່ມີຄວາມເສົ້າໂສກເປັນທຳມະດາຢູ່ອີກ ຕົນເອງມີຄວາມເສົ້າໝອງເປັນທຳມະດາ ແຕ່ກໍຍັງສະແຫວງຫາສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາຢູ່ອີກ

ພິກຂຸທັງຫຼາຍ ຫາກທ່ານທັງຫຼາຍຖາມວ່າ

ອັນໃດນໍ? ຮຽກວ່າ ສິ່ງທີ່ມີຄວາມເກີດເປັນທຳມະດາ

ເຮົາກ່າວວ່າ ບຸດ ພັນລະຍາ ທາສີ ຂ້າທາດ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ຄໍາ ເງິນ ທັງຫຼາຍນີ້ຮຽກວ່າ ສິ່ງທີ່ມີຄວາມເກີດເປັນທໍາມະດາ ສິ່ງທີ່ມີຄວາມເກີດເປັນທໍາມະດາເຫຼົ່ານັ້ນເປັນອຸປະທິ ຜູ້ທີ່ຕິດພັນລຸ້ມຫຼົງກ່ຽວຂ້ອງໃນອຸປະທິເຫຼົ່ານັ້ນ ຊື່ວ່າ ຕົນເອງມີຄວາມເກີດເປັນທໍາມະດາ ແຕ່ກໍຍັງສະແຫວງຫາສິ່ງທີ່ມີຄວາມເກີດເປັນທໍາມະດາຢູ່ອີກ

ອັນໃດນໍ? ຮຽກວ່າ ສິ່ງທີ່ມີຄວາມແກ່ເປັນທໍາມະດາ

ຄື ບຸດ ພັນລະຍາ ທາສີ ຂ້າທາດ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ຄໍາ ເງິນ ຮຽກວ່າ ສິ່ງທີ່ມີຄວາມແກ່ເປັນທໍາມະດາ ສິ່ງທີ່ມີຄວາມແກ່ເປັນທໍາມະດາເຫຼົ່ານັ້ນເປັນອຸປະທິ ຜູ້ທີ່ຕິດພັນລຸ້ມຫຼົງກ່ຽວຂ້ອງໃນອຸປະທິເຫຼົ່ານັ້ນ ຊື່ວ່າ ຕົນເອງມີຄວາມແກ່ເປັນທໍາມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມແກ່ເປັນທໍາມະດາຢູ່ອີກ

ອັນໃດນໍ? ຮຽກວ່າ ສິ່ງທີ່ມີຄວາມເຈັບໄຂ້ເປັນທໍາມະດາ

ຄື ບຸດ ພັນລະຍາ ທາສີ ຂ້າທາດ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ຄໍາ ເງິນ ຮຽກວ່າ ສິ່ງທີ່ມີຄວາມເຈັບໄຂ້ເປັນທໍາມະດາ ສິ່ງທີ່ມີຄວາມເຈັບໄຂ້ເປັນທໍາມະດາເຫຼົ່ານັ້ນ ເປັນອຸປະທິ ຜູ້ທີ່ຕິດພັນລຸ້ມຫຼົງກ່ຽວຂ້ອງໃນອຸປະທິເຫຼົ່ານັ້ນ ຊື່ວ່າ ຕົນເອງມີຄວາມເຈັບໄຂ້ເປັນທໍາມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມເຈັບໄຂ້ເປັນທໍາມະດາຢູ່ອີກ

ອັນໃດນໍ? ຮຽກວ່າ ສິ່ງທີ່ມີຄວາມຕາຍເປັນທໍາມະດາ

ຄື ບຸດ ພັນລະຍາ ທາສີ ຂ້າທາດ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ຄໍາ ເງິນ ຮຽກວ່າສິ່ງທີ່ມີຄວາມຕາຍເປັນທໍາມະດາ ສິ່ງທີ່ມີຄວາມຕາຍເປັນທໍາມະດາເຫຼົ່ານັ້ນ ເປັນອຸປະທິ ຜູ້ທີ່ຕິດພັນລຸ້ມຫຼົງກ່ຽວຂ້ອງໃນອຸປະທິເຫຼົ່ານັ້ນ ຊື່ວ່າ ຕົນເອງມີຄວາມຕາຍເປັນທໍາມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມຕາຍເປັນທໍາມະດາຢູ່ອີກ

ອັນໃດນໍ? ຮຽກວ່າສິ່ງທີ່ມີຄວາມເສົ້າໂສກເປັນທໍາມະດາ

ຄື ບຸດ ພັນລະຍາ ທາສີ ຂ້າທາດ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ຄໍາ ເງິນ ຮຽກວ່າ ສິ່ງທີ່ມີຄວາມເສົ້າໂສກເປັນທໍາມະດາ ສິ່ງທີ່ມີຄວາມເສົ້າໂສກເປັນທໍາມະດາເຫຼົ່ານັ້ນເປັນອຸປະທິ ຜູ້ທີ່ຕິດພັນລຸ້ມຫຼົງກ່ຽວຂ້ອງໃນອຸປະທິເຫຼົ່ານັ້ນ ຊື່ວ່າ ຕົນເອງມີຄວາມເສົ້າໂສກເປັນທໍາມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມເສົ້າໂສກເປັນທໍາມະດາຢູ່ອີກ

ອັນໃດນໍ? ຮຽກວ່າສິ່ງທີ່ມີຄວາມເສົ້າໝອງເປັນທໍາມະດາ

ຄື ບຸດ ພັນລະຍາ ທາສີ ຂ້າທາດ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ຄໍາ ເງິນ

ຮຽກວ່າ ສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາ ສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາເຫຼົ່ານັ້ນ ເປັນອຸປະທິ ຜູ້ທີ່ຕິດພັນລຸ້ມຫຼົງກ່ຽວຂ້ອງໃນອຸປະທິເຫຼົ່ານັ້ນ ຊື່ວ່າຕົນເອງ ມີຄວາມເສົ້າໝອງເປັນທຳມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາຢູ່ອີກ

ນີ້ຄືການສະແຫວງຫາທີ່ບໍ່ປະເສີດ

## ການສະແຫວງຫາທີ່ປະເສີດ

[໔໗໔] ການສະແຫວງຫາທີ່ປະເສີດ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ຕົນເອງມີຄວາມເກີດເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມເກີດເປັນທຳມະດາ ຍ່ອມສະແຫວງຫານິບພານທີ່ບໍ່ມີຄວາມເກີດ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ຕົນເອງມີຄວາມແກ່ເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມແກ່ເປັນທຳມະດາ ຍ່ອມສະແຫວງຫານິບພານທີ່ບໍ່ມີຄວາມແກ່ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ຕົນເອງມີຄວາມເຈັບໄຂ້ເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາ ຍ່ອມສະແຫວງຫານິບພານທີ່ບໍ່ມີຄວາມເຈັບໄຂ້ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ຕົນເອງມີຄວາມຕາຍເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມຕາຍເປັນທຳມະດາ ຍ່ອມສະແຫວງຫານິບພານທີ່ບໍ່ມີຄວາມຕາຍ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ຕົນເອງມີຄວາມເສົ້າໂສກເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມເສົ້າໂສກເປັນທຳມະດາ ຍ່ອມສະແຫວງຫານິບພານທີ່ບໍ່ມີຄວາມເສົ້າໂສກ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ຕົນເອງມີຄວາມເສົ້າໝອງເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາ ຍ່ອມສະແຫວງຫານິບພານທີ່ບໍ່ມີຄວາມເສົ້າໝອງ ບໍ່ມີທຳອື່ນຍິ່ງກວ່າແລະກະເສມຈາກໂຍຄະ

## ນີ້ຄືການສະແຫວງຫາທີ່ປະເສີດ

[໔໗໕] ພິກຂຸທັງຫຼາຍ ແຕ່ກ່ອນເຮົາເປັນໂພທິສັດ ຍັງບໍ່ໄດ້ຕັດສະຮູ້ ຕົນເອງມີຄວາມເກີດເປັນທຳມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມເກີດເປັນທຳມະດາຢູ່ນັ້ນແລ ຕົນເອງມີຄວາມແກ່

ເປັນທຳມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມແກ່ເປັນທຳມະດາຢູ່ນັ້ນແລ ຕົນເອງມີຄວາມເຈັບໄຂ້ເປັນທຳມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາຢູ່ນັ້ນແລ ຕົນເອງມີຄວາມຕາຍເປັນທຳມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມຕາຍເປັນທຳມະດາຢູ່ນັ້ນແລ ຕົນເອງມີຄວາມເສົ້າໂສກເປັນທຳມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມເສົ້າໂສກເປັນທຳມະດາຢູ່ນັ້ນແລ ຕົນເອງມີຄວາມເສົ້າໝອງເປັນທຳມະດາ ກໍຍັງສະແຫວງຫາສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາຢູ່ນັ້ນແລ

ເຮົາຈຶ່ງຄິດແບບນີ້ວ່າ "ເຮົາມີຄວາມເກີດເປັນທຳມະດາ ເປັນຫຍັງຍັງສະແຫວງຫາສິ່ງທີ່ມີຄວາມເກີດເປັນທຳມະດາຢູ່ອີກ" ເຮົາມີຄວາມແກ່ເປັນທຳມະດາ ຯລຯ ມີຄວາມເຈັບໄຂ້ເປັນທຳມະດາ ຯລຯ ມີຄວາມຕາຍເປັນທຳມະດາ ຯລຯ ມີຄວາມເສົ້າໂສກເປັນທຳມະດາ ຯລຯ ມີຄວາມເສົ້າໝອງເປັນທຳມະດາ ເປັນຫຍັງຍັງສະແຫວງຫາສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາຢູ່ອີກ" ທາງທີ່ດີ ເຮົາເອງທີ່ມີຄວາມເກີດເປັນທຳມະດາ ຮູ້ຊັດເຖິງໂທດໃນສິ່ງທີ່ມີຄວາມເກີດເປັນທຳມະດາແລ້ວ ຄວນສະແຫວງຫານິບພານທີ່ບໍ່ມີຄວາມເກີດ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ເຮົາເອງມີຄວາມແກ່ເປັນທຳມະດາ ຮູ້ຊັດເຖິງໂທດໃນສິ່ງທີ່ມີຄວາມແກ່ເປັນທຳມະດາແລ້ວ ຄວນສະແຫວງຫານິບພານທີ່ບໍ່ມີຄວາມແກ່ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ເຮົາເອງມີຄວາມເຈັບໄຂ້ເປັນທຳມະດາ ຮູ້ຊັດເຖິງໂທດໃນສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາແລ້ວ ຄວນສະແຫວງຫານິບພານທີ່ບໍ່ມີຄວາມເຈັບໄຂ້ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ເຮົາເອງມີຄວາມຕາຍເປັນທຳມະດາ ຮູ້ຊັດເຖິງໂທດໃນສິ່ງທີ່ມີຄວາມຕາຍເປັນທຳມະດາແລ້ວ ຄວນສະແຫວງຫານິບພານທີ່ບໍ່ມີຄວາມຕາຍ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ເຮົາເອງມີຄວາມເສົ້າໂສກເປັນທຳມະດາ ຮູ້ຊັດເຖິງໂທດໃນສິ່ງທີ່ມີຄວາມເສົ້າໂສກເປັນທຳມະດາແລ້ວ ຄວນສະແຫວງຫານິບພານທີ່ບໍ່ມີຄວາມເສົ້າໂສກ ບໍ່ມີທຳອື່ນຍິ່ງກວ່າ ແລະກະເສມຈາກໂຍຄະ

ເຮົາເອງມີຄວາມເສົ້າໝອງເປັນທຳມະດາ ຮູ້ຊັດເຖິງໂທດໃນສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາແລ້ວ ຄວນສະແຫວງຫານິບພານທີ່ບໍ່ມີຄວາມເສົ້າໝອງ ບໍ່ມີທຳອື່ນຍິ່ງກວ່າ ແລະກະເສມຈາກໂຍຄະ

## ພຸດທະປະຫວັດຕອນພໍ່າເພັງສະມາບັດ

## ໃນສຳນັກອາລາຣະດາບົດ

[໔໘໘] ພິກຂຸທັງຫຼາຍ ໃນການຕໍ່ມາ ເຮົາຍັງໜຸ່ມແໜ້ນ ແຂງແຮງ ມີເກສາດຳປອດຢູ່ໃນປະຖົມໄວ ເມື່ອພຣະຣາດຊະມານດາ ແລະ ພຣະຣາດຊະບິດາບໍ່ຊົງປາຖະໜາຈະໃຫ້ບວດມີພຣະພັກນອງດ້ວຍນ້ຳພຣະເນດຊົງກັນແສງຢູ່ ຈຶ່ງແຖຜົມແລະໜວດນຸ່ງຫົ່ມ ຜ້າກາສາວະພັດອອກຈາກວັງບວດເປັນບັນພະຊິດ ເມື່ອບວດແລ້ວກໍສະແຫວງຫາວ່າອັນໃດເປັນກຸສົນຢູາ ຂະນະທີ່ສະແຫວງຫາທາງອັນປະເສີດ ຄື ຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ໄດ້ເຂົ້າໄປຫາອາລາຣະດາບົດ ກາລາມະໂຄດ ແລ້ວກ່າວວ່າ “ທ່ານກາລາມະ ຂ້າພະເຈົ້າປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້”

ເມື່ອເຮົາກ່າວແນວນີ້ ອາລາຣະດາບົດ ກາລາມະໂຄດຈຶ່ງກ່າວກັບເຮົາວ່າ “ເຊີນທ່ານຢູ່ກ່ອນ ທຳນີ້ກໍເປັນເຊັ່ນດຽວກັບທຳທີ່ວິນຍູຊົນຈະເພິ່ງເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ຕາມແບບອາຈານຂອງຕົນ ເຂົ້າເຖິງຢູ່ໄດ້ໃນເວລາບໍ່ດົນ” ຈາກນັ້ນບໍ່ດົນ ເຮົາກໍຮຽນຮູ້ທຳນັ້ນໄດ້ຢ່າງວ່ອງໄວ ຊົ່ວຂະນະປິດປາກຈົບການເຈລະຈາປາໄສທໍ່ນັ້ນ ກໍກ່າວຍານວາທະ[໖] ແລະ ເຖຣະວາທະ[໗] ໄດ້ ທັງເຮົາແລະຜູ້ອື່ນກໍຮູ້ແຈ້ງວ່າ “ເຮົາຮູ້ ເຮົາເຫັນ” ເຮົາຈຶ່ງຄິດວ່າ “ອາລາຣະດາບົດກາລາມະໂຄດປະກາດທຳນີ້ດ້ວຍເຫດພຽງຄວາມເຊື່ອຢ່າງດຽວວ່າ “ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່” ກໍບໍ່ແມ່ນ ແຕ່ອາລາຣະດາບົດ ກາລາມະໂຄດ ຍັງຮູ້ ຍັງເຫັນທຳນີ້ຢ່າງແນ່ນອນ”

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອາລາຣະດາບົດ ກາລາມະໂຄດແລ້ວຖາມວ່າ “ທ່ານກາລາມະ ທ່ານປະກາດທຳນີ້ວ່າ “ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່” ດ້ວຍເຫດພຽງທໍ່ໃດ?”

ເມື່ອເຮົາຖາມຢ່າງນີ້ ອາລາຣະດາບົດ ກາລາມະໂຄດຈຶ່ງປະກາດອາກິນຈັນຍາຍະຕະນະສະມາບັດແກ່ເຮົາ ເຮົາຈຶ່ງຄິດວ່າ “ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທໍ່ນັ້ນທີ່ມີສັດທາ ແມ່ນເຮົາກໍມີສັດທາ ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທໍ່ນັ້ນທີ່ມີວິຣິຍະ ແມ່ນເຮົາກໍມີວິຣິຍະ ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທໍ່ນັ້ນທີ່ມີສະຕິ ແມ່ນເຮົາກໍມີສະຕິ ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທໍ່ນັ້ນທີ່ມີສະມາທິ ແມ່ນເຮົາກໍມີສະມາທິ ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທໍ່ນັ້ນ ທີ່ມີປັນຍາ ແມ່ນເຮົາກໍມີປັນຍາທາງທີ່ດີ ເຮົາຄວນພໍ່າເພັງພຽນ ເພື່ອເຮັດໃຫ້ແຈ້ງທຳທີ່ອາລາຣະດາບົດ ກາລາມະໂຄດປະກາດວ່າ “ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່” ຈາກນັ້ນບໍ່ດົນ ເຮົາກໍເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງ

ຢູ່ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອາລາຣະດາບົດ ກາລາມະໂຄດແລ້ວຖາມວ່າ "ທ່ານກາລາມະ ທ່ານປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງ ທໍ່ນີ້ບໍ?"

ອາລາຣະດາບົດ ກາລາມະໂຄດຕອບວ່າ "ທ່ານຜູ້ມີອາຍຸ ຂ້າພະເຈົ້າປະກາດດ້ວຍເຫດ ພຽງທໍ່ນີ້ແລ"

(ເຮົາຈຶ່ງກ່າວວ່າ) "ທ່ານກາລາມະ ແມ່ນຂ້າພະເຈົ້າກໍເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງ ເອງເຂົ້າເຖິງຢູ່ດ້ວຍເຫດພຽງທໍ່ນີ້"

(ອາລາຣະດາບົດ ກາລາມະໂຄດກ່າວວ່າ) "ທ່ານຜູ້ມີອາຍຸ ເປັນລາບຂອງພວກຂ້າພະ ເຈົ້າ ພວກຂ້າພະເຈົ້າໄດ້ດີແລ້ວທີ່ໄດ້ພົບເພື່ອນພົມມະຈາຣີເຊັ່ນທ່ານ ຍ້ອນຂ້າພະເຈົ້າປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳໃດ ທ່ານກໍເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຂ້າພະເຈົ້າກໍປະກາດວ່າ "ຂ້າພະເຈົ້າ ເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຂ້າພະເຈົ້າຮູ້ທຳໃດ ທ່ານກໍຮູ້ທຳນັ້ນ ທ່ານຮູ້ ທຳໃດ ຂ້າພະເຈົ້າກໍຮູ້ທຳນັ້ນ ເປັນອັນວ່າຂ້າພະເຈົ້າເປັນເຊັ່ນໃດ ທ່ານກໍເປັນເຊັ່ນນັ້ນ ທ່ານເປັນ ເຊັ່ນໃດ ຂ້າພະເຈົ້າກໍເປັນເຊັ່ນນັ້ນ ມາເທີ້ນ ບັດນີ້ ເຮົາທັງສອງ ຈະຢູ່ຮ່ວມກັນບໍລິຫານຄະນະນີ້"

ພິກຂຸທັງຫຼາຍ ອາລາຣະດາບົດ ກາລາມະໂຄດ ທັງທີ່ເປັນອາຈານຂອງເຮົາ ກໍຍົກຍ້ອງ ເຮົາຜູ້ເປັນສິດໃຫ້ສະເໝີກັບຕົນ ແລະ ບູຊາເຮົາດ້ວຍການບູຊາຢ່າງດີ ດ້ວຍປະການຢ່າງນີ້ ແຕ່ ເຮົາຄິດວ່າ "ທຳນີ້ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະ ເພື່ອນິບພານ ເປັນໄປພຽງເພື່ອເຂົ້າເຖິງອາກິນຈັນຍາຍະຕະນະ ສະມາບັດທໍ່ນັ້ນ" ເຮົາບໍ່ພໍໃຈ ເບື່ອໜ່າຍທຳນັ້ນ ຈຶ່ງລາຈາກໄປ

## ໃນສຳນັກອຸທະກະດາບົດ

[໔໗໘] ພິກຂຸທັງຫຼາຍ ເຮົານັ້ນ ສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາ ທາງອັນປະເສີດຄືຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ໄດ້ເຂົ້າໄປຫາອຸທະກະດາບົດ ຣາມະບຸດ ແລ້ວກ່າວວ່າ "ທ່ານຣາມະ ຂ້າພະເຈົ້າປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້"

ເມື່ອເຮົາກ່າວແນວນີ້ ອຸທະກະດາບົດ ຣາມະບຸດຈຶ່ງກ່າວກັບເຮົາວ່າ "ເຊີນທ່ານຢູ່ກ່ອນ ທຳນີ້ກໍເປັນເຊັ່ນດຽວກັນກັບທຳທີ່ວິນຍູຊົນຈະເພິ່ງເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ຕາມແບບ ອາຈານຂອງຕົນເຂົ້າເຖິງຢູ່ໄດ້ໃນເວລາບໍ່ດົນ" ຈາກນັ້ນບໍ່ດົນ ເຮົາກໍຮຽນຮູ້ທຳນັ້ນໄດ້ຢ່າງວ່ອງໄວ ຊົ່ວຂະນະປິດປາກຈົບການເຈລະຈາປາໄສທໍ່ນັ້ນ ກໍກ່າວຍານວາທະແລະເຖຣວາທະໄດ້ ທັງເຮົາ

ແລະຜູ້ອື່ນກໍຮູ້ຊັດວ່າ "ເຮົາຮູ້ ເຮົາເຫັນ" ເຮົາຈຶ່ງຄິດວ່າ "ອຸທະກະດາບົດ ຣາມະບຸດປະກາດທຳນີ້ດ້ວຍເຫດພຽງຄວາມເຊື່ອຢ່າງດຽວວ່າ "ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ກໍຫາບໍ່ໄດ້ ແຕ່ອຸທະກະດາບົດ ຣາມະບຸດຍັງຮູ້ຍັງເຫັນທຳນີ້ດ້ວຍຢ່າງແນ່ນອນ"

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວຖາມວ່າ "ທ່ານຣາມະ ທ່ານປະກາດວ່າ "ຂ້າພະເຈົ້າ ເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທໍ່ໃດ?"

ເມື່ອເຮົາຖາມແນວນີ້ ອຸທະກະດາບົດ ຣາມະບຸດ ຈຶ່ງປະກາດເນວະສັນຍານາສັນຍາຍະຕະນະສະມາບັດແກ່ເຮົາ ເຮົາຈຶ່ງຄິດວ່າ "ບໍ່ແມ່ນແຕ່ອຸທະກະດາບົດ ຣາມະບຸດທໍ່ນັ້ນທີ່ມີສັດທາ ແມ່ນເຮົາກໍມີສັດທາ ບໍ່ແມ່ນແຕ່ອຸທະກະດາບົດຣາມະບຸດທໍ່ນັ້ນທີ່ມີວິຣິຍະ ແມ່ນເຮົາກໍມີວິຣິຍະ ບໍ່ແມ່ນແຕ່ອຸທະກະດາບົດຣາມະບຸດທໍ່ນັ້ນທີ່ມີສະຕິ ແມ່ນເຮົາກໍມີສະຕິ ບໍ່ແມ່ນແຕ່ອຸທະກະດາບົດຣາມະບຸດທໍ່ນັ້ນທີ່ມີສະມາທິ ແມ່ນເຮົາກໍມີສະມາທິ ບໍ່ແມ່ນແຕ່ອຸທະກະດາບົດຣາມະບຸດທໍ່ນັ້ນທີ່ມີປັນຍາ ແມ່ນເຮົາກໍມີປັນຍາ ທາງທີ່ດີ ເຮົາຄວນເລີ່ມພໍ່າເພັງພຽນເພື່ອເຮັດໃຫ້ແຈ້ງທຳທີ່ອຸທະກະດາບົດ ຣາມະບຸດ ປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ຈາກນັ້ນບໍ່ດົນ ເຮົາກໍໄດ້ເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວຖາມວ່າ "ທ່ານຣາມະ ທ່ານປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍເຫດພຽງທໍ່ນີ້ບໍ?"

ອຸທະກະດາບົດ ຣາມະບຸດຕອບວ່າ "ທ່ານຜູ້ມີອາຍຸ ຂ້າພະເຈົ້າປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທໍ່ນີ້ແລ"

(ເຮົາຈຶ່ງກ່າວວ່າ) "ແມ່ນຂ້າພະເຈົ້າກໍເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ດ້ວຍເຫດພຽງທໍ່ນີ້"

(ອຸທະກະດາບົດ ຣາມະບຸດກ່າວວ່າ) "ທ່ານຜູ້ມີອາຍຸ ເປັນລາບຂອງພວກຂ້າພະເຈົ້າ ພວກຂ້າພະເຈົ້າໄດ້ດີແລ້ວທີ່ໄດ້ພົບເພື່ອນພົມມະຈາຣີເຊັ່ນທ່ານ ຍ້ອນ (ຂ້າພະເຈົ້າ) ຣາມະປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ທ່ານກໍເຮັດໃຫ້ແຈ້ງທຳນັ້ນ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຣາມະກໍປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນັ້ນ ຣາມະຮູ້ທຳໃດ ທ່ານກໍຮູ້ທຳນັ້ນ ທ່ານຮູ້ທຳໃດ ຣາມະກໍຮູ້ທຳນັ້ນ ເປັນອັນວ່າຣາມະເປັນເຊັ່ນໃດ ທ່ານກໍເປັນເຊັ່ນນັ້ນ ທ່ານເປັນເຊັ່ນໃດ ຣາມະກໍເປັນເຊັ່ນນັ້ນ ມາເທີ້ນ ບັດນີ້ ທ່ານຈົ່ງບໍລິຫານຄະນະນີ້"

ພິກຂຸທັງຫຼາຍ ອຸທະກະດາບົດ ຣາມະບຸດທັງທີ່ເປັນເພື່ອນພົມມະຈາຣີຂອງເຮົາ ກໍຍົກຍ້ອງ ເຮົາໄວ້ໃນຖານະອາຈານ ແລະ ບູຊາເຮົາດ້ວຍການບູຊາຢ່າງດີ ດ້ວຍປະການຢ່າງນີ້ ແຕ່ເຮົາ ຄິດວ່າ "ທຳນີ້ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະ ເພື່ອນິບພານ ເປັນໄປພຽງເພື່ອເຂົ້າເຖິງເນວະສັນຍານາສັນຍາຍະຕະນະສະມາບັດເທົ່ານັ້ນ" ເຮົາບໍ່ພໍໃຈ ເບື່ອໜ່າຍທຳນັ້ນ ຈຶ່ງລາຈາກໄປ

## ຕັດສະຮູ້ສັດຈະທຳ

[໔໗໙] ພິກຂຸທັງຫຼາຍ ເຮົານັ້ນ ສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາທາງອັນປະເສີດ ຄື ຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ເມື່ອທ່ຽວຈາຣິກໄປໃນແຄວ້ນມະຄົດໂດຍລຳດັບ ໄດ້ໄປເຖິງເຂດອຸຣຸເວລາເສນານິຄົມ ໄດ້ເຫັນພູມປະເທດທີ່ໜ້າອອນຊອນ ມີປ່າໜ້າເພີດເພີນໃຈ ມີແມ່ນ້ຳໄຫຼລິນບໍ່ຂາດສາຍ ມີທ່ານ້ຳສະອາດດີ ໜ້າອອນຊອນ ມີໂຄຈອນຄາມຢູ່ໂດຍຮອບ ເຮົາຈຶ່ງຄິດວ່າ "ພູມິປະເທດເປັນທີ່ໜ້າອອນຊອນ ມີປ່າໜ້າເພີດເພີນໃຈ ມີແມ່ນ້ຳໄຫຼລິນບໍ່ຂາດສາຍ ມີທ່ານ້ຳສະອາດດີ ໜ້າອອນຊອນ ມີໂຄຈອນຄາມຢູ່ໂດຍຮອບ ເໝາະແກ່ການພ່ຳເພັງພຽນຂອງກຸນລະບຸດຜູ້ປາຖະໜາຈະພ່ຳເພັງພຽນ" ເຮົາຈຶ່ງນັ່ງລົງບ່ອນນັ້ນດ້ວຍຄິດວ່າ "ບ່ອນນີ້ເໝາະແກ່ການພ່ຳເພັງພຽນ"

[໔໘໐] ພິກຂຸທັງຫຼາຍ ເຮົາເອງມີຄວາມເກີດເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມເກີດເປັນທຳມະດາ ແລ້ວສະແຫວງຫາຈົນໄດ້ບັນລຸນິບພານທີ່ບໍ່ມີຄວາມເກີດ ບໍ່ມີທຳອື່ນຍິ່ງກວ່າແລະກະເສມຈາກໂຍຄະ

ເຮົາເອງມີຄວາມແກ່ເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມແກ່ເປັນທຳມະດາ ແລ້ວສະແຫວງຫາຈົນໄດ້ບັນລຸນິບພານທີ່ບໍ່ມີຄວາມແກ່ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ເຮົາເອງມີຄວາມເຈັບໄຂ້ເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມເຈັບໄຂ້ເປັນທຳມະດາ ແລ້ວສະແຫວງຫາຈົນໄດ້ບັນລຸນິບພານທີ່ບໍ່ມີຄວາມເຈັບໄຂ້ ບໍ່ມີທຳອື່ນຍິ່ງກວ່າ ແລະກະເສມຈາກໂຍຄະ

ເຮົາເອງມີຄວາມຕາຍເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມຕາຍເປັນທຳມະດາ ແລ້ວສະແຫວງຫາຈົນໄດ້ບັນລຸນິບພານທີ່ບໍ່ມີຄວາມຕາຍ ບໍ່ມີທຳອື່ນຍິ່ງກວ່າ ແລະ ກະເສມຈາກໂຍຄະ

ເຮົາເອງມີຄວາມເສົ້າໂສກເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມເສົ້າໂສກເປັນ

ທຳມະດາ ແລ້ວສະແຫວງຫາຈົນໄດ້ບັນລຸນິບພານທີ່ບໍ່ມີຄວາມເສົ້າໂສກ ບໍ່ມີທຳອື່ນຍິ່ງກວ່າ ແລະກະເສມຈາກໂຍຄະ

ເຮົາເອງມີຄວາມເສົ້າໝອງເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາ ແລ້ວສະແຫວງຫາຈົນໄດ້ບັນລຸນິບພານທີ່ບໍ່ມີຄວາມເສົ້າໝອງ ບໍ່ມີທຳອື່ນຍິ່ງກວ່າ ແລະກະເສມຈາກໂຍຄະ ພອມທັງຍານທັດສະນະໄດ້ເກີດແກ່ເຮົາວ່າ "ວິມຸດຕິຂອງເຮົາບໍ່ກຳເຮີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ"

## ຊົງມີຄວາມຂວນຂວາຍໜ້ອຍ

[໒໗໑] ພິກຂຸທັງຫຼາຍ ເຮົານັ້ນໄດ້ມີຄວາມດຳຣິວ່າ "ທຳ໑ທີ່ເຮົາໄດ້ບັນລຸແລ້ວນີ້ ເລິກເຊິ່ງເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ສະງົບ ປະນີດ ບໍ່ເປັນວິໄສແຫ່ງຕັກກະ ລະອຽດ ບັນດິດ (ທີ່ນັ້ນ) ຈຶ່ງຈະຮູ້ໄດ້ ສ່ວນໝູ່ປະຊາຜູ້ອອນຊອນດ້ວຍອາໄລ໒ ຍິນດີໃນອາໄລ ເພີດເພີນໃນອາໄລ ຖານະທີ່ໝູ່ສັດຜູ້ອອນຊອນດ້ວຍອາໄລ ຍິນດີໃນອາໄລ ເພີດເພີນໃນອາໄລນີ້ຍ່ອມເປັນສິ່ງທີ່ເຫັນໄດ້ຍາກ ກ່າວ ຄື ຫຼັກອິທັບປັດຈະຍະຕາ ຫຼັກປະຕິດຈະສະມຸບບາດ ເຖິງແມ່ນຖານະອັນນີ້ກໍເປັນສິ່ງທີ່ເຫັນໄດ້ຍາກຫຼາຍ ກ່າວຄືຄວາມສະງົບແຫ່ງສັງຂານທັງປວງ ຄວາມກຳຈັດຖິ້ມອຸປະທີທັງປວງ ຄວາມສິ້ນຕັນຫາ ວິຣາຄະ ນິໂຣທະ ນິບພານ ກໍຖ້າເຮົາຈະເພິ່ງສະແດງທຳ ແລະ ຜູ້ອື່ນຈະບໍ່ເຂົ້າໃຈຊຶ້ງຕໍ່ເຮົາ ຂໍ້ນັ້ນ ກໍຈະເພິ່ງເປັນຄວາມເມື່ອຍລ້າຊື່ ໆ ແກ່ເຮົາ ຈະເພິ່ງເປັນຄວາມລຳບາກແກ່ເຮົາຊື່ ໆ"

ອັນໜຶ່ງ ຄາຖາອັນໜ້າອັດສະຈັນເຫຼົ່ານີ້ທີ່ບໍ່ເຄີຍສະດັບມາກ່ອນ ໄດ້ຜາກົດແກ່ເຮົາວ່າ "ບັດນີ້ ເຮົາຍັງບໍ່ຄວນປະກາດທຳທີ່ເຮົາບັນລຸດ້ວຍຄວາມລຳບາກ ຍ້ອນທຳນີ້ບໍ່ແມ່ນສິ່ງທີ່ຜູ້ຖືກຣາຄະແລະໂທສະຄອບງຳຈະຮູ້ໄດ້ງ່າຍ ແຕ່ເປັນສິ່ງພາທວນກະແສ໓ ລະອຽດ ເລິກເຊິ່ງ ຮູ້ເຫັນໄດ້ຍາກ ປະນີດ ຜູ້ກຳໜັດດ້ວຍຣາຄະ ຖືກກອງໂມຫະຫຸ້ມຫໍ່ໄວ້ ຈັກຮູ້ເຫັນບໍ່ໄດ້"

## ສະຫຳບໍດີພົມອາຣາດທະນາສະແດງທຳ

[໒໗໒] ພິກຂຸທັງຫຼາຍ ເມື່ອເຮົາພິຈາລະນາດັ່ງນີ້ ຈິດກໍນ້ອມໄປເພື່ອຄວາມຂວນຂວາຍໜ້ອຍບໍ່ໄດ້ນ້ອມໄປເພື່ອສະແດງທຳ

ຄັ້ງນັ້ນ ສະຫຳບໍດີພົມຮູ້ຄວາມດຳຣິໃນໃຈຂອງເຮົາດ້ວຍໃຈຂອງຕົນ ຈຶ່ງໄດ້ມີ ຄວາມລຳພຶງວ່າ "ທ່ານຜູ້ຈະເລີນ ໂລກຈະສູນຫາຍແລ້ວນໍ ໂລກຈະພິນາດແລ້ວນໍ ຍ້ອນພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງນ້ອມພຣະທະໄທໄປເພື່ອຄວາມຂວນຂວາຍໜ້ອຍ ບໍ່ໄດ້ນ້ອມພຣະທະໄທໄປເພື່ອຊົງສະແດງທຳ"

ລຳດັບນັ້ນ ສະຫຳບໍດີພົມໄດ້ອັນຕະຣະທານຈາກພົມມະໂລກມາຜາກົດເບື້ອງໜ້າເຮົາ ປຽບເໝືອນ ຄົນແຂງແຮງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ແລ້ວຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ປະນົມມືມາທາງທີ່ເຮົາຢູ່ ໄດ້ກ່າວກັບເຮົາວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດສະແດງທຳ ຂໍພຣະສຸຄົດເຈົ້າໄດ້ໂຜດສະແດງທຳ ຍ້ອນສັດທັງຫຼາຍຜູ້ມີທຸລີໃນດວງຕາໜ້ອຍມີຢູ່ ສັດເຫຼົ່ານັ້ນ ຈະເສື່ອມຍ້ອນບໍ່ໄດ້ສະດັບທຳ ສັດເຫຼົ່ານັ້ນ ຈັກເປັນຜູ້ຮູ້ທົ່ວເຖິງທຳ"

ເມື່ອສະຫຳບໍດີພົມໄດ້ທູນອາຣາດທະນາດັ່ງນີ້ແລ້ວ ໄດ້ທູນເປັນຄາຖາປະພັນຕໍ່ໄປວ່າ

## ພົມນິຄົມຄາຖາ

"ໃນການກ່ອນ ທຳທີ່ບໍ່ບໍລິສຸດ
ອັນຄົນທີ່ມີມົນທິນ[໑]ຄິດຄົ້ນໄວ້ ຜາກົດໃນແຄວັນມະຄົດ
ພຣະອົງໂຜດໄຂປະຕູອະມະຕະທຳນັ້ນເທີ້ນ
ຂໍສັດທັງຫຼາຍຈົ່ງຟັງທຳທີ່ພຣະສຳມາສຳພຸດທະເຈົ້າ
ຜູ້ປາສະຈາກມົນທິນ ໄດ້ຕັດສະຮູ້ແລ້ວ
ຂ້າແດ່ ພຣະອົງຜູ້ມີພຣະປັນຍາດີ ມີພຣະສະມັນຕະຈັກຂຸ
ບຸຣຸດຜູ້ຢືນຢູ່ເທິງຍອດເຂົາສິລາລ້ວນ
ເພິ່ງເຫັນໝູ່ຊົນໄດ້ໂດຍຮອບ ແມ່ນສັນໃດ
ພຣະອົງຜູ້ມົດຄວາມໂສກເສົ້າແລ້ວ
ໂຜດສະເດັດຂຶ້ນສູ່ຜາສາດຄືທຳ
ຈັກໄດ້ເຫັນໝູ່ຊົນຜູ້ຕົກຢູ່ໃນຄວາມໂສກເສົ້າ
ແລະຖືກຊາດຊະຣາຄອບງຳໄດ້ຊັດເຈນ ສັນນັ້ນ
ຂ້າແດ່ ພຣະອົງຜູ້ມີຄວາມພຽນ
ຜູ້ຊະນະສົງຄາມ[໒] ຜູ້ນຳໝູ່[໔] ຜູ້ບໍ່ມີໜີ້[໑]
ຂໍພຣະອົງໂຜດລຸກຂຶ້ນສະເດັດຈາຣິກໄປໃນໂລກ
ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດສະແດງທຳ
ຍ້ອນສັດທັງຫຼາຍຈັກເປັນຜູ້ຮູ້ທົ່ວເຖິງທຳ"

## ເວໄນຍະສັດປຽບດ້ວຍດອກບົວ ໔

[໔໗໑] ພິກຂຸທັງຫຼາຍ ຄັ້ງນັ້ນ ເຮົາຮັບຄຳທູນອາຣາດທະນາຂອງພົມ ແລະ ຍ້ອນຄວາມມີກະລຸນາໃນສັດທັງຫຼາຍ ຈຶ່ງກວດເບິ່ງໂລກດ້ວຍພຸດທະຈັກຂຸ ເມື່ອກວດເບິ່ງໂລກດ້ວຍພຸດທະ

ຈັກຂຸ ໄດ້ເຫັນສັດທັງຫຼາຍຜູ້ມີທຸລີໃນດວງຕາໜ້ອຍ ມີທຸລີໃນດວງຕາຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ສອນໃຫ້ຮູ້ໄດ້ງ່າຍ ສອນໃຫ້ຮູ້ໄດ້ຍາກ ລາງພວກເຫັນປະຣະໂລກແລະໂທດວ່າ ເປັນສິ່ງເປັນຕາຢ້ານ ລາງພວກເຫັນປະຣະໂລກແລະໂທດວ່າ ເປັນສິ່ງບໍ່ເປັນຕາຢ້ານ

ປຽບເໝືອນ ໃນກໍອຸບົນ ໃນກໍປະທຸມະ ຫຼື ໃນກໍບຸນທະຣິກ ດອກບົວ ດອກບົວຫຼວງ ດອກບົວຂາວ ລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຍັງບໍ່ພົ້ນນ້ຳ ຈົມຢູ່ໃຕ້ນ້ຳ ແລະ ມີນ້ຳຫຼໍ່ລ້ຽງໄວ້ ດອກບົວ ດອກບົວຫຼວງ ດອກບົວຂາວ ລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຢູ່ສະເໝີນ້ຳ ດອກບົວ ດອກບົວຫຼວງ ດອກບົວຂາວ ລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຢູ່ພົ້ນນ້ຳ ບໍ່ແຕະນ້ຳ ແມ່ນສັນໃດ

ເຮົາເມື່ອກວດເບິ່ງໂລກດ້ວຍພຸດທະຈັກຂຸ ໄດ້ເຫັນສັດທັງຫຼາຍຜູ້ມີທຸລີໃນດວງຕາໜ້ອຍ ມີທຸລີໃນດວງຕາຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ສອນໃຫ້ຮູ້ໄດ້ງ່າຍ ສອນໃຫ້ຮູ້ໄດ້ຍາກ ລາງພວກເຫັນປະຣະໂລກ ແລະ ໂທດວ່າເປັນສິ່ງເປັນຕາຢ້ານ ລາງພວກມັກເຫັນປະຣະໂລກ ແລະ ໂທດວ່າ ເປັນສິ່ງບໍ່ເປັນຕາຢ້ານ ສັນນັ້ນ

ລຳດັບນັ້ນ ເຮົາຈຶ່ງໄດ້ກ່າວຄາຖາຕອບສະຫຳບໍດີພົມ ວ່າ

"ພົມ ສັດເຫຼົ່າໃດມີໂສຕະປະສາດ
ຈົ່ງປ່ອຍສັດທາມາເທີ້ນ
ເຮົາບໍ່ໄດ້ອັດປະຕູອະມະຕະທຳສຳລັບສັດເຫຼົ່ານັ້ນ
ແຕ່ເຮົາຮູ້ສຶກວ່າເປັນການຍາກລຳບາກ
ຈຶ່ງບໍ່ຄິດຈະສະແດງທຳອັນປະນີດ
ທີ່ເຮົາສຳນານ ໃນໝູ່ມະນຸດ"

ຄັ້ງນັ້ນ ສະຫຳບໍດີພົມຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າໄດ້ຊົງປະທານໂອກາດເພື່ອຈະສະແດງທຳແລ້ວ" ຈຶ່ງຖວາຍອະພິວາດເຮົາ ກະທຳປະທັກສິນແລ້ວໄດ້ຫາຍໄປຈາກທີ່ນັ້ນ

## ຊົງຮຳເພິງເຖິງຜູ້ຄວນຮັບທຳມະເທດສະໜາ

[໔໗໔] ພິກຂຸທັງຫຼາຍ ເຮົາດຳຣິວ່າ "ເຮົາຄວນສະແດງທຳແກ່ໃຜກ່ອນນໍ ໃຜຈັກຮູ້ທຳນີ້ໄດ້ທັນທີ" ແລ້ວດຳຣິຕໍ່ໄປວ່າ "ອາລາຣະດາບົດ ກາລາມະໂຄດນີ້ ເປັນບັນດິດ ສະຫຼາດແຫຼມຄົມ ມີປັນຍາ ມີທຸລີໃນດວງຕາໜ້ອຍມາດົນ ທາງທີ່ດີເຮົາຄວນ ສະແດງທຳແກ່ອາລາຣະດາບົດ ກາລາມະໂຄດກ່ອນ ທ່ານຈັກຮູ້ທຳນີ້ໄດ້ທັນທີ"

ຄັ້ງນັ້ນ ເທວະດາອົງໜຶ່ງ ເຂົ້າມາຫາເຮົາແລ້ວກ່າວວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອາລາຣະດາບົດ ກາລາມະໂຄດໄດ້ທຳກາລະໄດ້ ໗ ວັນແລ້ວ"

ອັນໜຶ່ງ ເຮົາກໍໄດ້ເກີດຍານທັດສະນະນີ້ຂຶ້ນວ່າ "ອາລາຣະດາບົດ ກາລາມະໂຄດ ທຳກາລະໄດ້ ໗ ວັນແລ້ວ" ຈຶ່ງດຳຣິວ່າ "ອາລາຣະດາບົດ ກາລາມະໂຄດ ເປັນຜູ້ມີຄວາມເສື່ອມຈາກຄຸນອັນຍິ່ງໃຫຍ່ແລ້ວນໍ ຍ້ອນຖ້າທ່ານໄດ້ຟັງທຳນີ້ ກໍຈະເພິ່ງຮູ້ໄດ້ທັນທີ"

ເຮົາຈຶ່ງດຳຣິວ່າ "ເຮົາຄວນສະແດງທຳແກ່ໃຜກ່ອນນໍ ໃຜຈັກຮູ້ທົ່ວເຖິງທຳນີ້ໄດ້ທັນໃດນັ້ນເອງ" ຈຶ່ງດຳຣິຕໍ່ໄປວ່າ "ອຸທະກະດາບົດ ຣາມະບຸດນີ້ ເປັນບັນດິດ ສະຫຼາດແຫຼມຄົມ ມີປັນຍາມີທຸລີໃນດວງຕາໜ້ອຍມາດົນ ທາງທີ່ດີ ເຮົາຄວນສະແດງທຳແກ່ອຸທະກະດາບົດ ຣາມະບຸດກ່ອນ ທ່ານຈັກຮູ້ທຳນີ້ໄດ້ທັນທີ"

ລຳດັບນັ້ນ ເທວະດາອົງໜຶ່ງເຂົ້າມາຫາເຮົາແລ້ວກ່າວວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອຸທະກະດາບົດ ຣາມະບຸດ ໄດ້ທຳກາລະເມື່ອວານນີ້ແລ້ວ"

ອັນໜຶ່ງ ເຮົາກໍໄດ້ເກີດຍານທັດສະນະຂຶ້ນວ່າ "ອຸທະກະດາບົດ ຣາມະບຸດ ໄດ້ທຳກາລະເມື່ອວານນີ້" ຈຶ່ງດຳຣິວ່າ "ອຸທະກະດາບົດ ຣາມະບຸດ ເປັນຜູ້ມີຄວາມເສື່ອມຈາກຄຸນອັນຍິ່ງໃຫຍ່ແລ້ວນໍ ຍ້ອນວ່າ ຖ້າທ່ານໄດ້ຟັງທຳນີ້ ກໍຈະເພິ່ງຮູ້ໄດ້ທັນທີ"

ເຮົາຈຶ່ງດຳຣິວ່າ "ເຮົາຄວນສະແດງທຳແກ່ໃຜກ່ອນນໍ ໃຜຈັກຮູ້ທຳນີ້ໄດ້ທັນທີ" ຈຶ່ງດຳຣິວ່າ "ພິກຂຸປັນຈະວັກຄີມີອຸປະກາຣະແກ່ເຮົາຫຼາຍ ທີ່ໄດ້ເຝົ້າປົບນິບັດເຮົາຜູ້ມຸ້ງພ່ຳເພັງພຽນ ທາງທີ່ດີເຮົາຄວນສະແດງທຳແກ່ພິກຂຸປັນຈະວັກຄີກ່ອນ" ແລ້ວດຳຣິຕໍ່ໄປວ່າ "ບັດນີ້ ພິກຂຸປັນຈະວັກຄີຢູ່ທີ່ໃດນໍ?" ກໍໄດ້ເຫັນພິກຂຸປັນຈະວັກຄີຢູ່ທີ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ພິກຂຸທັງຫຼາຍ ຄັ້ງນັ້ນ ເຮົາພັກຢູ່ທີ່ເຂດອຸຣຸເວລາຕາມຄວາມຕ້ອງການແລ້ວ ໄດ້ຈາຣິກໄປທາງນະຄອນພາຣານະສີ

## ຊົງພົບອຸປະກາຊີວົກ

[໔໗໕] ພິກຂຸທັງຫຼາຍ ອາຊີວະກະຊື່ ອຸປະ ກໍໄດ້ພົບເຮົາຜູ້ກຳລັງເດີນທາງໄກ ລະຫວ່າງແມ່ນ້ຳຄະຍາກັບຕົ້ນໂພທິພຶກ ໄດ້ຖາມເຮົາວ່າ "ອາວຸໂສ ອິນຊີຂອງທ່ານຜ່ອງໃສຍິ່ງ ຜິວພັນຂອງທ່ານບໍລິສຸດແທ້ ທ່ານບວດອຸທິດຜູ້ໃດ ໃຜເປັນສາດສະດາຂອງທ່ານ ຫຼື ທ່ານພໍໃຈທຳຂອງຜູ້ໃດ"

ເມື່ອອຸປະກາຊີວົກຖາມຢ່າງນີ້ແລ້ວ ເຮົາຈຶ່ງໄດ້ກ່າວຄາຖາຕອບອຸປະກາຊີວົກ ວ່າ

"ເຮົາເປັນຜູ້ຄອບງໍາທໍາທັງປວງ[໑] ຮູ້ທໍາທັງປວງ[໒]
ບໍ່ໄດ້ເປິເປື້ອນໃນທໍາທັງປວງ[໓] ລະທໍາທັງປວງ[໔] ໄດ້ໝົດສິ້ນ
ລຸດພົ້ນຍ້ອນສິ້ນຕັນຫາ ຕັດສະຣູ້ຍິ່ງເອງ
ແລ້ວຈະເພິ່ງກ່າວອ້າງຮອດຜູ້ໃດນໍ?
ເຮົາບໍ່ມີອາຈານ[໕] ເຮົາບໍ່ມີຜູ້ສະເໝີເໝືອນ
ເຮົາບໍ່ມີຜູ້ທັດທຽມໃນໂລກກັບທັງເທວະໂລກ
ຍ້ອນເຮົາເປັນອະຣະຫັນ ເປັນສາດສະດາຜູ້ປະເສີດ
ເຮົາຜູ້ດຽວເປັນຜູ້ຕັດສະຣູ້ເອງໂດຍຊອບ
ເປັນຜູ້ເຢືອກເຢັນ ດັບກິເລດໃນໂລກໄດ້ແລ້ວ
ເຮົາຈະໄປເມືອງຫລວງຂອງຊາວກາສີ ປະກາດທໍາມະຈັກ
ຕີກອງອະມະຕະທໍາໄປໃນໂລກອັນຖືກຄວາມມືດມົນປົກຄຸມໄວ້"[໑]

ອຸປະກາຊີວົກກ່າວວ່າ "ອາວຸໂສ ທ່ານສົມຄວນເປັນພຣະອະນັນຕະຊິນະຕາມທີ່ທ່ານປະກາດ"

ເຮົາຈຶ່ງກ່າວຕອບເປັນຄາຖາ ວ່າ
"ຊິນເຫຼົ່າໃດໄດ້ເຖິງຄວາມສິ້ນອາສະວະແລ້ວ
ຊິນເຫຼົ່ານັ້ນຍ່ອມເປັນພຣະຊິນະເຊັ່ນເຮົາ
ອຸປະກະ ເຮົາຊະນະຄວາມຊົ່ວໄດ້ແລ້ວ
ຍ້ອນແນວນັ້ນ ເຮົາຈຶ່ງຊື່ວ່າພຣະຊິນະ"

ເມື່ອເຮົາກ່າວແນວນັ້ນແລ້ວ ອຸປະກາຊີວົກຈຶ່ງກ່າວວ່າ "ອາວຸໂສ ຄວນຈະເປັນແນວນັ້ນ" ແກວ່ງຫົວແລ້ວຍ່າງສວນທາງຈາກໄປ

## ຊົງສະແດງທໍາໂຜດພິກຂຸປັນຈະວັກຄີ

[໘໒໖] ພິກຂຸທັງຫຼາຍ ລໍາດັບນັ້ນ ເຮົາຈາຣິກໄປໂດຍລໍາດັບ ເຖິງປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ໄດ້ເຂົ້າໄປຫາພິກຂຸປັນຈະວັກຄີເຖິງທີ່ຢູ່ ພິກຂຸປັນຈະວັກຄີ ເຫັນເຮົາຍ່າງມາແຕ່ໄກ ຈຶ່ງນັດໝາຍກັນແລະກັນວ່າ "ອາວຸໂສ ພຣະສະມະນະໂຄດົມນີ້ເປັນຜູ້ມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຄົນມັກຫຼາຍ ກໍາລັງສະເດັດມາ ພວກເຮົາບໍ່ເພິ່ງຂາບໄຫວ້ ບໍ່ເພິ່ງລຸກຮັບ ບໍ່ເພິ່ງຮັບບາດແລະຈີວອນຂອງພຣະອົງ ແຕ່ຈະຈັດອາສະນະໄວ້ ຖ້າພຣະອົງປາຖະໜາກໍຈັກປະທັບນັ່ງລົງເອງ"

ເຮົາເຂົ້າໄປຫາພິກຂຸປັນຈະວັກຄີ ພິກຂຸປັນຈະວັກຄີກໍລືມຂໍ້ທີ່ພວກຕົນນັດໝາຍກັນໄວ້ ລາງພວກຕ້ອນຮັບເຮົາແລ້ວຮັບບາດແລະຈີວອນ ລາງພວກປູລາດອາສະນະ ລາງພວກຈັດຫານ້ຳລ້າງຕີນ ແຕ່ພິກຂຸປັນຈະວັກຄີຮຽກເຮົາໂດຍອອກນາມແລະໃຊ້ຄຳວ່າ "ອາວຸໂສ"໔

ເມື່ອພິກຂຸປັນຈະວັກຄີກ່າວແນວນັ້ນແລ້ວ ເຮົາຈຶ່ງຫ້າມພິກຂຸປັນຍົດວັກຄີວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່າຮຽກຕະຖາຄົດໂດຍອອກຊື່ແລະໃຊ້ຄຳວ່າ "ອາວຸໂສ" ຕະຖາຄົດເປັນອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ທ່ານທັງຫຼາຍຈົ່ງງ່ຽງໂສຕະສະດັບ ເຮົາຈະສັ່ງສອນອະມະຕະທຳທີ່ເຮົາໄດ້ບັນລຸແລ້ວ ຈະສະແດງທຳ ທ່ານທັງຫຼາຍເມື່ອປະຕິບັດຕາມທີ່ເຮົາສັ່ງສອນບໍ່ດົນຫຼາຍກໍຈັກເຮັດໃຫ້ແຈ້ງ ເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຊອບຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນນີ້ແນ່ແທ້"

ເມື່ອເຮົາກ່າວແນວນີ້ແລ້ວ ພິກຂຸປັນຈະວັກຄີໄດ້ກ່າວກັບເຮົາວ່າ "ອາວຸໂສໂຄດົມ ແມ່ນດ້ວຍຈະຣິຍານັ້ນ ດ້ວຍປະຕິປະທານັ້ນ ດ້ວຍທຸກກອນກິຣິຍານັ້ນ ພຣະອົງກໍຍັງບໍ່ໄດ້ບັນລຸຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ບັດນີ້ ພຣະອົງເປັນຜູ້ມັກຫຼາຍຄາຍຄວາມພຽນ ວຽນມາເພື່ອຄວາມເປັນຄົນມັກຫຼາຍ ເປັນຫຍັງ ຈັກບັນລຸຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດໄດ້ນໍ?"

ເມື່ອພິກຂຸປັນຈະວັກຄີກ່າວແນວນັ້ນແລ້ວ ເຮົາຈຶ່ງໄດ້ກ່າວກັບພິກຂຸປັນຈະວັກຄີວ່າ "ພິກຂຸທັງຫຼາຍ ຕະຖາຄົດບໍ່ໄດ້ເປັນຄົນມັກຫຼາຍ ບໍ່ໄດ້ຄາຍຄວາມພຽນ ບໍ່ໄດ້ວຽນມາເພື່ອຄວາມເປັນຄົນມັກຫຼາຍ ຕະຖາຄົດເປັນອະຣະຫັນຕັດສະຣູ້ດ້ວຍຕົນເອງໂດຍຊອບ ທ່ານທັງຫຼາຍ ຈົ່ງເງ່ຍໂສຕະສະດັບ ເຮົາຈະສອນອະມະຕະທຳທີ່ເຮົາໄດ້ບັນລຸແລ້ວ ຈະສະແດງທຳ ທ່ານທັງຫຼາຍ ເມື່ອປະຕິບັດຕາມທີ່ເຮົາສັ່ງສອນ ບໍ່ດົນຫຼາຍກໍຈັກເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຊອບຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນນີ້ໄດ້ແນ່ນອນ"

ແມ່ນເທື່ອທີ ໒ ພິກຂຸປັນຈະວັກຄີກໍໄດ້ກ່າວກັບເຮົາວ່າ ຯລຯ

ແມ່ນເທື່ອທີ ໒ ເຮົາກໍໄດ້ກ່າວກັບພິກຂຸປັນຈະວັກຄີວ່າ ຯລຯ

ແມ່ນເທື່ອທີ ໓ ພິກຂຸປັນຈະວັກຄີກໍໄດ້ກ່າວກັບເຮົາວ່າ "ອາວຸໂສໂຄດົມ ແມ່ນດ້ວຍຈະຣິຍານັ້ນ ດ້ວຍປະຕິປະທານັ້ນ ດ້ວຍທຸກກະຣະກິຣິຍານັ້ນ ພຣະອົງກໍຍັງບໍ່ໄດ້ບັນລຸຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດໄດ້ ບັດນີ້ ພຣະອົງເປັນຜູ້ມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຄົນມັກຫຼາຍ ແລ້ວເປັນຫຍັງ ພຣະອົງຈັກບັນລຸຍານທັດສະ

ນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດໄດ້ບໍ?"

ເມື່ອພິກຂຸປັນຈະວັກຄີກ່າວແນວນັ້ນແລ້ວ ເຮົາໄດ້ກ່າວກັບພິກຂຸປັນຈະວັກຄີວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍ ຍັງຈື່ໄດ້ຫຼືບໍ່ວ່າ ຄຳເວົ້າແນວນີ້ເຮົາໄດ້ເຄີຍກ່າວມາກ່ອນ"

ພິກຂຸປັນຈະວັກຄີກ່າວວ່າ "ຄຳເວົ້າແນວນີ້ບໍ່ເຄີຍໄດ້ຟັງມາກ່ອນ ຂ້ານ້ອຍ"

ເຮົາຈຶ່ງກ່າວວ່າ "ພິກຂຸທັງຫຼາຍ ຕະຖາຄົດເປັນອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ທ່ານທັງຫຼາຍຈົ່ງງ່ຽງໂສຕະສະດັບ ເຮົາຈະສັ່ງສອນອະມະຕະທຳທີ່ເຮົາໄດ້ບັນລຸແລ້ວ ຈະສະແດງທຳ ທ່ານທັງຫຼາຍ ເມື່ອປະຕິບັດຕາມທີ່ເຮົາສັ່ງສອນ ບໍ່ດົນຫຼາຍກໍຈັກເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດ ໂດຍຊອບຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນນີ້ແນ່ນອນ"

ເມື່ອເຮົາສາມາດເຮັດໃຫ້ພິກຂຸປັນຈະວັກຄີຍິນຍອມໄດ້ແລ້ວ ເຮົາກໍກ່າວສອນພິກຂຸ ໒ ອົງ ພິກຂຸ ໓ ອົງ ກໍທ່ຽວບິນທະບາດ ເຮົາທັງ ໖ ສັນບິນທະບາດທີ່ພິກຂຸ ໓ ອົງນຳມາ ເຮົາກ່າວສອນພິກຂຸ ໓ ອົງ ພິກຂຸ ໒ ອົງ ກໍທ່ຽວບິນທະບາດ ເຮົາທັງ ໖ ສັນບິນທະບາດ ທີ່ພິກຂຸ ໒ ອົງນຳມາ[១]

ຕໍ່ມາ ພິກຂຸປັນຈະວັກຄີທີ່ເຮົາສັ່ງສອນ ແລະ ບອກສອນຢູ່ແນວນີ້ ເປັນຜູ້ມີຄວາມເກີດເປັນທຳມະດາ ຮູ້ຊັດເຖິງໂທດໃນສິ່ງທີ່ມີຄວາມເກີດເປັນທຳມະດາດ້ວຍຕົນແລ້ວ ຈຶ່ງສະແຫວງຫານິບພານທີ່ບໍ່ມີຄວາມເກີດ ອັນເປັນແດນກະເສມຈາກໂຍຄະອັນປະເສີດ ໄດ້ບັນລຸນິບພານ ທີ່ບໍ່ມີຄວາມເກີດ ອັນເປັນແດນກະເສມຈາກໂຍຄະອັນປະເສີດແລ້ວ

ເປັນຜູ້ມີຄວາມແກ່ເປັນທຳມະດາ ຮູ້ແຈ້ງເຖິງໂທດໃນສິ່ງທີ່ມີຄວາມແກ່ເປັນທຳມະດາດ້ວຍຕົນແລ້ວ ຈຶ່ງສະແຫວງຫານິບພານທີ່ບໍ່ມີຄວາມແກ່ ອັນເປັນແດນກະເສມຈາກໂຍຄະອັນປະເສີດ ໄດ້ບັນລຸນິບພານທີ່ບໍ່ມີຄວາມແກ່ອັນເປັນແດນກະເສມຈາກໂຍຄະອັນປະເສີດແລ້ວ

ເປັນຜູ້ມີຄວາມເຈັບເປັນທຳມະດາ ຯລຯ
ເປັນຜູ້ມີຄວາມຕາຍເປັນທຳມະດາ ຯລຯ
ເປັນຜູ້ມີຄວາມເສົ້າໂສກເປັນທຳມະດາ ຯລຯ

ເປັນຜູ້ມີຄວາມເສົ້າໝອງເປັນທຳມະດາ ຮູ້ຊັດເຖິງໂທດໃນສິ່ງທີ່ມີຄວາມເສົ້າໝອງເປັນທຳມະດາດ້ວຍຕົນແລ້ວ ຈຶ່ງສະແຫວງຫານິບພານທີ່ບໍ່ມີຄວາມເສົ້າໝອງ ອັນເປັນແດນກະເສມຈາກໂຍຄະອັນປະເສີດ ໄດ້ບັນລຸນິບພານທີ່ບໍ່ມີຄວາມເສົ້າໝອງ ອັນເປັນແດນກະເສມຈາກໂຍຄະອັນປະເສີດແລ້ວ

ອັນໜຶ່ງ ພິກຂຸປັນຈະວັກຄີເຫຼົ່ານັ້ນ ໄດ້ເກີດຍານທັດສະນະຂຶ້ນມາວ່າ "ວິມຸດຕິຂອງພວກເຮົາບໍ່ກຳເຣີບ ຊາດນີ້ເປັນຊາດສຸດທ້າຍ ພົບໃໝ່ບໍ່ມີອີກຕໍ່ໄປອີກ"

[໔໗໗] ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ຈະຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ຈະຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ຈະຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ຈະຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ຈະຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ກາມມະຄຸນມີ ໕ ປະການນີ້

ສະມະນະ ຫຼື ພາມພວກໃດພວກໜຶ່ງໃຝ່ຝັນ ລຸ້ມຫຼົງ ຕິດພັນ ບໍ່ເຫັນໂທດ ບໍ່ມີປັນຍາເຄື່ອງກຳຈັດອອກ ບໍຣິໂພກກາມມະຄຸນ ໕ ປະການນີ້ ບັນດິດເພິ່ງຮູ້ວ່າ "ສະມະນະພາມພວກນັ້ນເປັນຜູ້ເຖິງຄວາມເສື່ອມ ຄວາມພິນາດ ຖືກມານໃຈບາບເຮັດຫຍັງໄດ້ຕາມໃຈມັກ"

## ປຽບທຽບນັກບວດກັບໝູ່ເນື້ອ

ພິກຂຸທັງຫຼາຍ ເນື້ອປ່າທີ່ຕິດບ່ວງ ນອນທັບບ່ວງ ເພິ່ງຮູ້ວ່າ "ເປັນສັດທີ່ເຖິງຄວາມເສື່ອມ ຄວາມພິນາດ ຖືກນາຍພານເນື້ອເຮັດຫຍັງ ໆ ໄດ້ຕາມໃຈມັກ" ເມື່ອນາຍພານເນື້ອຍ່າງເຂົ້າມາ ກໍໜີໄປບໍ່ໄດ້ຕາມປາຖະໜາ ແມ່ນສັນໃດ ສະມະນະຫຼືພາມພວກໃດພວກໜຶ່ງກໍຄືກັນສັນນັ້ນ ໃຝ່ຝັນ ລຸ້ມຫຼົງ ຕິດພັນ ບໍ່ເຫັນໂທດ ບໍ່ມີປັນຍາເຄື່ອງກຳຈັດອອກ ຍ່ອມບໍຣິໂພກກາມມະຄຸນ ໕ ປະການນີ້ ບັນດິດເພິ່ງຮູ້ວ່າ "ສະມະນະພາມພວກນັ້ນເປັນຜູ້ເຖິງຄວາມເສື່ອມ ຄວາມພິນາດ ຖືກມານໃຈບາບເຮັດຫຍັງໄດ້ຕາມໃຈມັກ" ແຕ່ສະມະນະຫຼືພາມພວກໃດພວກໜຶ່ງບໍ່ໃຝ່ຝັນ ບໍ່ລຸ້ມຫຼົງ ບໍ່ຕິດພັນ ເຫັນໂທດ ມີປັນຍາເຄື່ອງກຳຈັດອອກ ຍ່ອມບໍຣິໂພກກາມມະຄຸນ ໕ ປະການນີ້ ບັນດິດເພິ່ງຮູ້ວ່າ "ສະມະນະພາມພວກນັ້ນ ເປັນຜູ້ບໍ່ເຖິງຄວາມເສື່ອມ ຄວາມພິນາດ ບໍ່ຖືກມານໃຈບາບເຮັດຫຍັງໄດ້ຕາມໃຈມັກ"

ຊີ້ນປ່າທີ່ບໍ່ຕິດບ່ວງ ນອນທັບບ່ວງ ເພິ່ງຮູ້ວ່າ "ເປັນສັດບໍ່ເຖິງຄວາມເສື່ອມ ບໍ່ເຖິງຄວາມພິນາດ ບໍ່ຖືກນາຍພານເນື້ອເຮັດຫຍັງໄດ້ຕາມໃຈມັກ" ເມື່ອນາຍພານເນື້ອຍ່າງເຂົ້າມາ ກໍໜີໄປໄດ້ຕາມປາຖະໜາ ແມ່ນສັນໃດ ສະມະນະຫຼືພາມພວກໃດພວກໜຶ່ງກໍຄືກັນສັນນັ້ນ ບໍ່ໃຝ່ຝັນ ບໍ່ລຸ້ມ

ຫຼີ້ງ ບໍ່ຕິດພັນ ເຫັນໂທດ ມີປັນຍາເຄື່ອງກຳຈັດອອກ[9] ຍ່ອມບໍຣິໂພກກາມມະຄຸນ ໕ ປະການນີ້ ບັນດິດເພິ່ງຮູ້ວ່າ "ສະມະນະພາມພວກນັ້ນເປັນຜູ້ບໍ່ເຖິງຄວາມເສື່ອມ ບໍ່ເຖິງຄວາມພິນາດ ບໍ່ຖືກມານໃຈບາບເຮັດຫຍັງຕາມໃຈມັກ"

ອັນໜຶ່ງ ເນື້ອປ່າເມື່ອທ່ຽວໄປຕາມປ່າໃຫຍ່ ຍ່ອມວາງໃຈຍ່າງ ຢືນ ນັ່ງ ນອນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບໍ່ໄດ້ພົບກັບນາຍພານເນື້ອ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປິຕິແລະສຸກອັນເກີດຈາກວິເວກຢູ່ ເຮົາຮຽກພິກຂຸນີ້ວ່າ "ຜູ້ເຮັດໃຫ້ມານຕາບອດ ຄືທຳລາຍດວງຕາຂອງ ມານຢ່າງບໍ່ມີຮ່ອງຮອຍ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິແລະສຸກອັນເກີດຈາກສະມາທິຢູ່ ຯລຯ

ອີກປະການໜຶ່ງ ຍ້ອນປິຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ຯລຯ

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປ ກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ເຮົາຮຽກພິກຂຸນີ້ວ່າ "ຜູ້ເຮັດໃຫ້ມານຕາບອດ ຄື ທຳລາຍດວງຕາຂອງມານຢ່າງບໍ່ມີຮ່ອງຮອຍ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນລ່ວງອົງສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ພິກຂຸບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ອາກາດ ຫາທີ່ສຸດບໍ່ໄດ້" ເຮົາຮຽກພິກຂຸນີ້ວ່າ "ຜູ້ເຮັດໃຫ້ມານຕາບອດ ຄື ທຳລາຍດວງຕາຂອງມານຢ່າງບໍ່ມີຮ່ອງຮອຍ ເຖິງການທີ່ມານໃຈບາບແນມບໍ່ເຫັນ"

ອີກປະການໜຶ່ງ ຍ້ອນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸວິນຍານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຯລຯ

ອີກປະການໜຶ່ງ ຍ້ອນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸອາກິນຈັນຍາຍະຕະນະຊານຢູ່ໂດຍກຳນົດວ່າ "ບໍ່ມີອັນໃດ" ຯລຯ

ອີກປະການໜຶ່ງ ຍ້ອນລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸ

ເນວະສັນຍານາສັນຍາຍະຕະນະຊານຢູ່ ໗ລ໗

ພິກຂຸທັງຫຼາຍ ອີກປະການໜຶ່ງ ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸສັນຍາເວທະຍິຕະນິໂຣດຢູ່ ກໍຍ້ອນເຫັນດ້ວຍປັນຍາ ທ່ານຍ່ອມມີອາສະວະສິ້ນໄປ ເຮົາຮຽກພິກຂຸນີ້ວ່າ "ຜູ້ເຮັດໃຫ້ມານຕາບອດ ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນຍ້ອນທຳລາຍດວງຕາຂອງມານຢ່າງບໍ່ມີຮ່ອງຮອຍ" ເປັນຜູ້ຂ້າມພົ້ນຕັນຫາອັນຂ້ອງຢູ່ໃນອາລົມຕ່າງ ໆ ໃນໂລກໄດ້ ຍ່ອມວາງໃຈ ຍ່າງ ຢືນ ນັ່ງ ນອນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບໍ່ໄດ້ດຳເນີນຢູ່ໃນທາງຂອງມານໃຈບາບ"

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ປາສະຣາສີສູດທີ ໖ ຈົບ**

# ໗. ຈູລະຫັດຖິປະໂທປະມະສູດ

## ວ່າດ້ວຍອຸປະມາດ້ວຍຮອຍຕີນຊ້າງ ສູດນ້ອຍ

[໔໘໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພາມຊື່ຊານຸດໂສນີອອກຈາກນະຄອນສາວັດຖີດ້ວຍລົດຄັນໃຫຍ່ທີ່ທຽມດ້ວຍລາເຊິ່ງມີເຄື່ອງປະດັບທຸກຢ່າງລ້ວນເປັນສີຂາວ ໃນເວລາທ່ຽງວັນຊານຸດໂສນີພາມໄດ້ເຫັນປະຣິພາຊົກຊື່ປິໂລຕິກະຍ່າງມາແຕ່ໄກ ເມື່ອເຫັນແລ້ວໄດ້ກ່າວກັບປິໂລຕິກະປະຣິພາຊົກແນວນີ້ວ່າ "ທ່ານວັດສາຍະນະຜູ້ຈະເລີນມາຈາກໃສແຕ່ຍັງເວັນ?"

ປິໂລຕິກະປະຣິພາຊົກຕອບວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າມາຈາກສຳນັກຂອງພຣະສະມະນະໂຄດົມນັ້ນແລ"

"ທ່ານວັດສາຍະນະ ເຫັນຈະເຂົ້າໃຈຄວາມແຫຼມຄົມແຫ່ງປັນຍາຂອງພຣະສະມະນະໂຄດົມວ່າ ພຣະອົງເປັນບັນດິດ ຫຼື ແນວໃດ?"

"ທ່ານຜູ້ຈະເລີນ ກໍຂ້າພະເຈົ້າເປັນໃຜນໍ? ຈຶ່ງຈັກຮູ້ຄວາມແຫຼມຄົມແຫ່ງປັນຍາຂອງພຣະ

ສະມະນະໂຄດົມໄດ້ ແມ່ນຜູ້ທີ່ຈະຮູ້ຄວາມແຫຼມຄົມແຫ່ງປັນຍາຂອງພຣະສະມະນະໂຄດົມໄດ້ ກໍຈະຕ້ອງເປັນຄືພຣະສະມະນະໂຄດົມທໍ່ນັ້ນ"

"ທ່ານວັດສາຍະນະສັນເສີນພຣະສະມະນະໂຄດົມດ້ວຍການສັນເສີນຢ່າງສູງ"

"ຂ້າພະເຈົ້າ ຈັກບໍ່ສັນເສີນພຣະສະມະນະໂຄດົມຢ່າງໃດໄດ້ນໍ? ຍ້ອນພຣະສະມະນະໂຄດົມຜູ້ຈະເລີນນັ້ນ ໃຜ ໆ ກໍສັນເສີນໄວ້ຢ່າງນີ້ວ່າ "ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ"

"ທ່ານວັດສາຍະນະເຫັນອຳນາດປະໂຫຍດອັນໃດນໍ? ຈຶ່ງເຫຼື້ອມໃສຢ່າງຍິ່ງໃນພຣະສະມະນະໂຄດົມເຖິງພຽງນີ້"

ປິໂລຕິກະປະຣິພາຊົກຕອບວ່າ "ທ່ານຜູ້ຈະເລີນ ເປັນຫຍັງຂ້າພະເຈົ້າຈຶ່ງເປັນຜູ້ເຫຼື້ອມໃສຢ່າງຍິ່ງໃນພຣະສະມະນະໂຄດົມເຖິງແນວນີ້ ປຽບເໝືອນ ພານຊ້າງຜູ້ສະຫຼາດຈະເພິ່ງເຂົ້າໄປໃນປ່າເປັນບ່ອນຢູ່ຂອງຊ້າງ ແລະ ເຫັນຮອຍຕີນຊ້າງຂະໜາດໃຫຍ່ທັງຍາວແລະກວ້າງ ໃນປ່າເປັນບ່ອນຢູ່ຂອງຊ້າງນັ້ນ ເຂົາຕັດສິນໃຈໄດ້ວ່າ "ຊ້າງຕົວນີ້ໃຫຍ່ແທ້ນໍ" ແມ່ນສັນໃດ ຂ້າພະເຈົ້າກໍຄືກັນສັນນັ້ນ ເມື່ອໄດ້ເຫັນຮອຍ ໔ ຮອຍ ໃນພຣະສະມະນະໂຄດົມແລ້ວກໍຕັດສິນໃຈໄດ້ວ່າ "ພຣະຜູ້ມີພຣະພາກເຈົ້າເປັນພຣະສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

## ຮອຍຂອງພຣະຕະຖາຄົດ

[໔໗໙] ຮອຍ ໔ ຮອຍ ອັນໃດແນ ຄື

໑. ຂ້າພະເຈົ້າເຫັນຂັດຕິຍະບັນດິດລາງພວກໃນໂລກນີ້ ເປັນຜູ້ລະອຽດອ່ອນ ໂຕ້ຕອບວາທະຂອງຜູ້ອື່ນໄດ້ຄືກັນກັບການຍິງຂົນຊີ້ນຊາຍ ຂັດຕິຍະບັນດິດເຫຼົ່ານັ້ນເບິ່ງຄືວ່າທ່ຽວທຳລາຍທິດຖິທັງຫຼາຍ (ຂອງຜູ້ອື່ນ) ດ້ວຍປັນຍາ (ຂອງຕົນ) ພໍໄດ້ສະດັບມາວ່າ "ພຣະສະມະນະໂຄດົມຈັກສະເດັດທ່ຽວໄປສູ່ໝູ່ບ້ານ ຫຼື ນິຄົມຊື່ນັ້ນ" ກໍພາກັນຄິດມັດບັນຫາດ້ວຍຕັ້ງໃຈວ່າ "ພວກເຮົາຈັກເຂົ້າໄປຫາພຣະສະມະນະໂຄດົມແລ້ວຖາມບັນຫານີ້ ຫາກພຣະສະມະນະໂຄດົມນັ້ນ ຖືກພວກເຮົາຖາມແລ້ວຢ່າງນີ້ ຈັກຕອບຢ່າງນີ້ ພວກເຮົາຈັກຍົກວາທະແນວນີ້ຂຶ້ນແກ່ພຣະອົງ ແມ່ນຫາກພຣະສະມະນະໂຄດົມນັ້ນຖືກພວກເຮົາຖາມແລ້ວຢ່າງນີ້ ຈັກຕອບຢ່າງນີ້ ພວກເຮົາກໍຈັກຍົກວາທະແນວນີ້ຂຶ້ນຖາມພຣະອົງ" ຂັດຕິຍະບັນດິດເຫຼົ່ານັ້ນໄດ້ສະດັບວ່າ "ພຣະສະມະນະໂຄດົມສະເດັດທ່ຽວໄປສູ່ໝູ່ບ້ານ ຫຼື ນິຄົມຊື່ນັ້ນແລ້ວ" ກໍພາກັນໄປເຂົ້າເຝົ້າພຣະສະມະນະໂຄດົມເຖິງທີ່ປະທັບ ພຣະສະມະນະໂຄດົມກໍຊົງຊີ້ແຈ່ງໃຫ້ຂັດຕິຍະບັນດິດເຫຼົ່ານັ້ນເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປ

ປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ຂັດຕິຍະບັນດິດເຫຼົ່ານັ້ນຜູ້ອັນພຣະສະມະນະໂຄດົມຊີ້ງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ກໍບໍ່ຖາມບັນຫາກັບທ່ານພຣະສະມະນະໂຄດົມອີກເລີຍ ແລ້ວຈັກຍົກວາທະຂຶ້ນແກ່ພຣະສະມະນະໂຄດົມນັ້ນໄດ້ແນວໃດນໍ? ຕ່າງກໍພາກັນຍອມເປັນສາວົກຂອງພຣະສະມະນະໂຄດົມ

ເມື່ອຂ້າພະເຈົ້າໄດ້ເຫັນຮອຍທີ ໑ ນີ້ໃນພຣະສະມະນະໂຄດົມແລ້ວ ຂ້າພະເຈົ້າກໍຕັດສິນໃຈໄດ້ວ່າ "ພຣະຜູ້ມີພຣະພາກເຈົ້າເປັນພຣະສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

໔. ຂ້າພະເຈົ້າເຫັນ ພາມມະນະບັນດິດ ລາງພວກ ຯລຯ

໕. ຂ້າພະເຈົ້າເຫັນ ຄະຫະບໍດີບັນດິດ ລາງພວກ ຯລຯ

໔. ຂ້າພະເຈົ້າເຫັນ ສະມະນະບັນດິດ ລາງພວກໃນໂລກນີ້ ເປັນຜູ້ລະອຽດອ່ອນ ໂຕ້ຕອບວາທະຂອງຜູ້ອື່ນໄດ້ຄືກັບວ່າຍິງຂົນເນື້ອຊາຍ ສະມະນະບັນດິດເຫຼົ່ານັ້ນເບິ່ງຄືວ່າທ່ຽວທຳລາຍທິດຖິທັງຫຼາຍ (ຂອງຜູ້ອື່ນ) ດ້ວຍປັນຍາ (ຂອງຕົນ) ພໍໄດ້ສະດັບວ່າ "ພຣະສະມະນະໂຄດົມຈັກສະເດັດທ່ຽວໄປສູ່ໝູ່ບ້ານ ຫຼື ນິຄົມຊື່ນັ້ນ" ກໍພາກັນຄິດມັດບັນຫາດ້ວຍຕັ້ງໃຈວ່າ "ພວກເຮົາຈັກເຂົ້າໄປຫາພຣະສະມະນະໂຄດົມແລ້ວຖາມບັນຫານີ້ ຫາກພຣະສະມະນະໂຄດົມນັ້ນຖືກພວກເຮົາຖາມແລ້ວຢ່າງນີ້ ຈັກຕອບຢ່າງນີ້ ພວກເຮົາຈັກຍົກວາທະແນວນີ້ຂຶ້ນແກ່ພຣະອົງ ແມ່ນຫາກພຣະສະມະນະໂຄດົມນັ້ນຖືກພວກເຮົາຖາມແລ້ວແນວນີ້ ຈັກຕອບແນວນີ້ ພວກເຮົາກໍຈັກຍົກວາທະແນວນີ້ຂຶ້ນແກ່ພຣະອົງ" ສະມະນະບັນດິດເຫຼົ່ານັ້ນໄດ້ສະດັບວ່າ "ພຣະສະມະນະໂຄດົມສະເດັດທ່ຽວໄປສູ່ໝູ່ບ້ານ ຫຼື ນິຄົມຊື່ນັ້ນແລ້ວ" ກໍພາກັນໄປເຂົ້າເຝົ້າພຣະສະມະນະໂຄດົມ ເຖິງທີ່ປະທັບ ພຣະສະມະນະໂຄດົມກໍຊົງຊີ້ແຈ່ງໃຫ້ສະມະນະບັນດິດເຫຼົ່ານັ້ນເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ສະມະນະບັນດິດເຫຼົ່ານັ້ນ ຜູ້ອັນພຣະສະມະນະໂຄດົມຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ກໍບໍ່ຖາມບັນຫາກັບທ່ານພຣະສະມະນະໂຄດົມອີກເລີຍ ແລ້ວຈັກຍົກວາທະຂຶ້ນແກ່ພຣະສະມະນະໂຄດົມນັ້ນໄດ້ແນວໃດນໍ ແທ້ທີ່ຈິງຕ່າງພາກັນທູນຂໍໂອກາດກັບພຣະສະມະນະໂຄດົມນັ້ນເພື່ອອອກຈາກເຮືອນບວດເປັນບັນພະຊິດ ພຣະສະມະນະໂຄດົມກໍຊົງປະທານບັນພະຊາແກ່ສະມະນະບັນດິດເຫຼົ່ານັ້ນ ສະມະນະບັນດິດເຫຼົ່ານັ້ນ ຜູ້ໄດ້ຮັບບັນພະຊາຈາກພຣະສະມະນະໂຄດົມໃນອະນາຄາຣິຍວິໄນນັ້ນແລ້ວ ຫຼີກອອກ (ຈາກໝູ່) ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນຫຼາຍກໍໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະ

ບຸດຜູ້ອອກຈາກເຮືອນ ບວດເປັນບັນພະຊິດໂດຍຊອບຕ້ອງການດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ສະມະນະບັນດິດເຫຼົ່ານັ້ນຈຶ່ງພາກັນກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ເຮົາທັງຫຼາຍເປັນຜູ້ບໍ່ສູນເສຍເລີຍແມ່ນແຕ່ໜ້ອຍ ເຮົາທັງຫຼາຍເປັນຜູ້ບໍ່ສູນເສຍເລີຍແມ່ນແຕ່ໜ້ອຍ ຍ້ອນວ່າໃນການກ່ອນ ເຮົາທັງຫຼາຍ ທັງທີ່ບໍ່ເປັນສະມະນະເລີຍກໍປະຕິຍານວ່າເປັນສະມະນະ ບໍ່ເປັນພາມເລີຍກໍປະຕິຍານວ່າເປັນພາມ ບໍ່ເປັນພຣະອະຣະຫັນເລີຍກໍປະຕິຍານວ່າເປັນພຣະອະຣະຫັນ ບັດນີ້ ພວກເຮົາເປັນສະມະນະແລ້ວ ບັດນີ້ ພວກເຮົາເປັນພາມແລ້ວ ບັດນີ້ ພວກເຮົາເປັນພຣະອະຣະຫັນແລ້ວ"

ເມື່ອຂ້າພະເຈົ້າໄດ້ເຫັນຮອຍທີ ໔ ນີ້ໃນພຣະສະມະນະໂຄດົມແລ້ວ ຂ້າພະເຈົ້າກໍຕັດສິນໃຈໄດ້ວ່າ "ພຣະຜູ້ມີພຣະພາກເຈົ້າ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ" ທ່ານຜູ້ຈະເລີນ ເມື່ອຂ້າພະເຈົ້າໄດ້ເຫັນຮອຍທັງ ໔ ເຫຼົ່ານີ້ ໃນພຣະສະມະນະໂຄດົມແລ້ວຂ້າພະເຈົ້າກໍຕັດສິນໃຈໄດ້ວ່າ "ພຣະຜູ້ມີພຣະພາກເຈົ້າ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີແລ້ວ"

[໔໐໐] ເມື່ອປິໂລຕິກະປະຣິພາຊົກກ່າວແນວນີ້ແລ້ວ ຊານຸດໂສນິພາມເຮັດຜ້າຫົ່ມ ບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງທິດທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແລ້ວເປ່ງວາຈາ ໓ ຄັ້ງວ່າ

"ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ

ເຮັດແນວໃດນໍ ເຮົາຈະໄດ້ພົບພຣະສະມະນະໂຄດົມນັ້ນຈັກເທື່ອໜຶ່ງ ເຮັດແນວໃດຈຶ່ງຈະໄດ້ສົນທະນາປາໄສ (ກັບພຣະສະມະນະໂຄດົມ) ແດ່"

ຄັ້ງນັ້ນ ຊານຸດໂສນິພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງໃນທີ່ສົມຄວນ ໄດ້ຂາບທູນເລົ່າເລື່ອງທີ່ສົນທະນາກັບປິໂລຕິກະປະຣິພາຊົກຕາມທີ່ກ່າວມາແລ້ວທັງຫຼາຍແດ່ພຣະຜູ້ມີພຣະພາກເຈົ້າ

ເມື່ອຊານຸດໂສນິພາມຂາບທູນຢ່າງນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຊານຸດໂສນິພາມ ວ່າ

"ພາມ ດ້ວຍເຫດພຽງທໍ່ນີ້ ຂໍ້ຄວາມປຽບທຽບດ້ວຍຮອຍຕີນຊ້າງຍັງບໍ່ໄດ້ ບໍລິບູນໂດຍພິດສະດານ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວຂໍ້ຄວາມປຽບທຽບດ້ວຍຮອຍຕີນຊ້າງທີ່ບໍລິບູນໂດຍພິດສະດານ"

ຊານຸດໂສນີພາມທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

## ກຽດຕິຄຸນຂອງພຣະຕະຖາຄົດປຽບກັບຮອຍຕີນຊ້າງ

[໒໘໑] "ພາມ ອຸປະມາເໝືອນພານຊ້າງຈະເພິ່ງເຂົ້າໄປສູ່ປ່າເປັນບ່ອນຢູ່ຂອງຊ້າງ ແລະເຫັນຮອຍຕີນຊ້າງຂະໜາດໃຫຍ່ທັງຍາວ ແລະ ກວ້າງໃນປ່າເປັນບ່ອນຢູ່ຂອງຊ້າງນັ້ນ ພານຊ້າງຜູ້ສະຫຼາດຍ່ອມບໍ່ຟ້າວຕັດສິນໃຈວ່າ "ຊ້າງຕົວນີ້ໃຫຍ່ແທ້ນໍ" ຂໍ້ນັ້ນຍ້ອນເຫດໃດ ຍ້ອນຍັງມີຊ້າງພັງທັງຫຼາຍຊື່ວ່າ ວາມະນິກາ (ພັງຄ່ອມ) ທີ່ມີຮອຍຕີນໃຫຍ່ ໃນປ່າເປັນບ່ອນຢູ່ຂອງຊ້າງຮອຍຕີນນີ້ຈະເພິ່ງເປັນຮອຍຕີນຊ້າງພັງເຫຼົ່ານັ້ນ

ພານຊ້າງນັ້ນ ນຳຮອຍຕີນຊ້າງນັ້ນໄປ ເມື່ອນຳຮອຍຕີນຊ້າງນັ້ນໄປກໍເຫັນຮອຍຕີນຊ້າງຂະໜາດໃຫຍ່ທັງຍາວແລະກວ້າງ ແລະ ທີ່ທີ່ຖືກສຽດສີໃນບ່ອນສູງໃນປ່າເປັນບ່ອນຢູ່ຂອງຊ້າງ ພານຊ້າງຜູ້ສະຫຼາດກໍຍັງບໍ່ຟ້າວຕັດສິນໃຈວ່າ "ຊ້າງຕົວນີ້ໃຫຍ່ແທ້ນໍ" ຂໍ້ນັ້ນຍ້ອນເຫດໃດ ຍ້ອນຍັງມີຊ້າງພັງທັງຫຼາຍຊື່ວ່າ ອຸດຈາກາລາຣິກາ (ພັງໂຍ່ງມີກຂະນາຍດຳແດງ) ທີ່ມີຮອຍຕີນໃຫຍ່ໃນປ່າເປັນບ່ອນຢູ່ຂອງຊ້າງ ຮອຍຕີນນີ້ຈະເພິ່ງເປັນຮອຍຕີນຊ້າງພັງເຫຼົ່ານັ້ນ

ພານຊ້າງນັ້ນນຳຮອຍຕີນຊ້າງນັ້ນໄປ ເມື່ອນຳຮອຍຕີນຊ້າງນັ້ນໄປກໍເຫັນຮອຍຕີນຊ້າງຂະໜາດໃຫຍ່ທັງຍາວແລະກວ້າງ ທີ່ທີ່ຖືກສຽດສີໃນບ່ອນສູງ ແລະ ທີ່ທີ່ງາແຂະຂາດໃນບ່ອນສູງໃນປ່າເປັນບ່ອນຢູ່ຂອງຊ້າງ ພານຊ້າງຜູ້ສະຫຼາດກໍຍັງບໍ່ຟ້າວຕັດສິນໃຈວ່າ "ຊ້າງຕົວນີ້ໃຫຍ່ແທ້ນໍ" ຂໍ້ນັ້ນຍ້ອນເຫດໃດ ຍ້ອນຊ້າງພັງທັງຫຼາຍຊື່ວ່າ ອຸດຈາກະເນຣຸກາ (ພັງໂຍ່ງມີຂະນາຍຕູມ) ທີ່ມີຮອຍຕີນໃຫຍ່ໃນປ່າເປັນບ່ອນຢູ່ຂອງຊ້າງ ຮອຍຕີນນີ້ຈະເພິ່ງເປັນຮອຍຕີນຊ້າງພັງເຫຼົ່ານັ້ນ

ພານຊ້າງນັ້ນນຳຮອຍຕີນຊ້າງນັ້ນໄປ ເມື່ອນຳຮອຍຕີນນັ້ນໄປກໍເຫັນຮອຍຕີນຊ້າງຂະໜາດໃຫຍ່ທັງຍາວແລະກວ້າງ ທີ່ທີ່ຖືກສຽດສີໃນບ່ອນສູງ ທີ່ທີ່ງາແຂະຂາດໃນບ່ອນສູງ ແລະງ່າໄມ້ຫັກໃນບ່ອນສູງ ແລະ ເຫັນຊ້າງນັ້ນທີ່ໂຄນຕົ້ນໄມ້ ທີ່ກາງແຈ້ງ ຍ່າງຢູ່ ຢືນຢູ່ ໝອບ ຫຼື ນອນຢູ່ ເຂົາຈຶ່ງຕັດສິນໃຈວ່າ "ຊ້າງຕົວນີ້ເອງເປັນຊ້າງໃຫຍ່ຕົວນັ້ນ" ແມ່ນສັນໃດ ຂໍ້ອຸປະໄມນີ້ກໍຄືກັນສັນນັ້ນ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຊອບ ພຽບພ້ອມດ້ວຍວິດຊາແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີ ເຝິກຜູ້ທີ່ຄວນເຝິກ ໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້

ມີພຣະພາກເຈົ້າ ຕະຖາຄົດນັ້ນຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດດ້ວຍຕົນເອງແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ນໍາ ສະແດງທໍາມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ຄະຫະບໍດີ ບຸດຄະຫະບໍດີ ຫຼື ອະນຸຊົນ (ຄົນຜູ້ເກີດພາຍຫຼັງ) ໃນຕະກູນໃດຕະກູນໜຶ່ງຍ່ອມຟັງທໍານັ້ນເມື່ອໄດ້ຟັງທໍານັ້ນແລ້ວ ເກີດສັດທາໃນຕະຖາຄົດ ເມື່ອມີສັດທາຍ່ອມຄິດວ່າ "ການຢູ່ຄອງເຮືອນເປັນເລື້ອງອຶດອັດ ເປັນທາງແຫ່ງທຸລີ ການບວດເປັນທາງປອດໂປ່ງ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນ ເໝືອນຫອຍສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດເທີ້ນ" ຕໍ່ມາ ເຂົາລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະ ເຄືອຍາດນ້ອຍໃຫຍ່ ແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ

## ສິກຂາແລະສາຊີບຂອງພິກຂຸ

[໒໗໒] ເຂົາເມື່ອບວດແລ້ວຢ່າງນີ້ ເປັນຜູ້ເຖິງພ້ອມດ້ວຍສິກຂາແລະສາຊີບ[១]

ສະເໝີດ້ວຍພິກຂຸທັງຫຼາຍ ຄື

໑. ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດ ແລະ ສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ລະເວັ້ນຂາດຈາກການລັກຂັບ ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ່ງຫວັງແຕ່ຂອງທີ່ເຂົາໃຫ້ບໍ່ເປັນຂີ້ລັກ ເປັນຄົນສະອາດຢູ່

໓. ລະພຶດຕິກໍາອັນເປັນຂ້າເສິກຕໍ່ພົມມະຈັນ ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທໍາ໌ອັນເປັນກິດຂອງຊາວບ້ານ

໔. ລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄໍາສັດ ດໍາລົງຄວາມສັດ ມີຄໍາເວົ້າເປັນຫຼັກ ເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກ

໕. ລະເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນເພື່ອທໍາລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນແລ້ວບໍ່ມາບອກຝ່າຍນີ້ ເພື່ອທໍາລາຍຝ່າຍນັ້ນ ສະມານຄົນທີ່ແຕກກັນ ສົ່ງເສີມຄົນທີ່ປອງດອງກັນ ຊົມຊື່ນຍິນດີ ເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄໍາເວົ້າທີ່ສ້າງສັນຄວາມສາມັກຄີ

໖. ລະເວັ້ນຂາດຈາກການເວົ້າຄຳຫຍາບ ຄື ເວົ້າແຕ່ຄຳທີ່ບໍ່ມີໂທດ ມ່ວນຫູ ໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ

໗. ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄຳຈິງ ເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີທີ່ອ້າງອີງ ມີທີ່ກຳນົດ ປະກອບດ້ວຍປະໂຫຍດ ເໝາະແກ່ເວລາ

[໒໙໓] ໘. ເວັ້ນຂາດຈາກການພາກພີຊະຄາມ[1] ແລະ ພູຕະຄາມ[2]

໙. ສັນຄາບດຽວ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນໃນເວລາວິການ[3]
໑໐. ເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງ ເສບດົນຕີ ແລະ ເບິ່ງການລະຫຼິ້ນທີ່ເປັນຂ້າເສິກແກ່ກຸສົນ
໑໑. ເວັ້ນຂາດຈາກການທັດຊົງ ປະດັບຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ ຂອງຫອມ ແລະເຄື່ອງຕົກແຕ່ງຜິວອັນເປັນລັກສະນະແຫ່ງການແຕ່ງຕົວ
໑໒. ເວັ້ນຂາດຈາກບ່ອນນອນສູງໃຫຍ່
໑໓. ເວັ້ນຂາດຈາກການຄຳແລະເງິນ
໑໔. ເວັ້ນຂາດຈາກການຮັບທັນຍາຫານດິບ[4]
໑໕. ເວັ້ນຂາດຈາກການຮັບຊີ້ນດິບ
໑໖. ເວັ້ນຂາດຈາກການຮັບສະຕີແລະກຸມາຣີ
໑໗. ເວັ້ນຂາດຈາກການຮັບຂ້າທາດຍິງແລະຂ້າທາດຊາຍ
໑໘. ເວັ້ນຂາດຈາກການຮັບແບ້ແລະແກະ
໑໙. ເວັ້ນຂາດຈາກການຮັບໄກ່ແລະໝູ
໒໐. ເວັ້ນຂາດຈາກການຮັບຊ້າງ ງົວ ມ້າແລະລາ
໒໑. ເວັ້ນຂາດຈາກການຮັບຮົ້ວສວນ ໄຮ່ນາແລະທີ່ດິນ
໒໒. ເວັ້ນຂາດຈາກການຮັບເຮັດໜ້າທີ່ເປັນຕົວແທນແລະຜູ້ສື່ສານ
໒໓. ເວັ້ນຂາດຈາກການຊື້ການຂາຍ
໒໔. ເວັ້ນຂາດຈາກການໂກງດ້ວຍຕາຊົ່ງ ດ້ວຍຂອງປອມແລະດ້ວຍເຄື່ອງຕວງວັດ
໒໕. ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງແລະການຫຼອກລວງ
໒໖. ເວັ້ນຂາດຈາກການຕັດ (ອະໄວຍະວະ) ການຂ້າ ການຈອງຈຳ ການຍາດຊິງ ການປຸ້ນແລະການຂູ່ກັນໂຊກ

[໒໙໔] ພິກຂຸນັ້ນ ເປັນຜູ້ສັນໂດດດ້ວຍຈີວອນພໍຫຸ້ມຮ່າງກາຍ ແລະ ບິນທະບາດພໍອີ່ມທ້ອງ ທ່ານໄປບ່ອນໃດ ກໍໄປໄດ້ທັນທີ ນົກມີປີກຈະບິນໄປບ່ອນໃດ ກໍມີແຕ່ປີກຂອງມັນເປັນພາ

ລະບິນໄປທີ່ນັ້ນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເປັນຜູ້ສັນໂດດດ້ວຍຈີວອນພໍຫຸ້ມຮ່າງກາຍ ແລະບິນທະບາດພໍອີ່ມທ້ອງ ທ່ານຈະໄປບ່ອນໃດ ກໍໄປໄດ້ທັນທີ ພິກຂຸນັ້ນ ປະກອບດ້ວຍອະຣິຍະສີນຂັນນີ້ແລ້ວ ຍ່ອມສະເຫວີຍສຸກອັນບໍ່ມີໂທດພາຍໃນ

[໘໖໕] ພິກຂຸນັ້ນ ເຫັນຮູບທາງຕາແລ້ວບໍ່ຮວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາ (ຄວາມເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ) ແລະໂທມະນັດ (ຄວາມທຸກໃຈ) ຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວບໍ່ຮວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະ ໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸປະກອບດ້ວຍອະຣິຍະອິນຊີສັງວອນນີ້ ຍ່ອມສະເຫວີຍສຸກອັນບໍ່ຜະສົມດ້ວຍກິເລດພາຍໃນ

ພິກຂຸນັ້ນ ທຳຄວາມຮູ້ສຶກຕົວໃນການກ້າວໄປ ການຖອຍກັບ ການແນມເບິ່ງ ການຫລຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການຫຍໍ້າ ການຊີມ ການຖ່າຍອຸດຈາຣະ ປັດສາວະ ການຍ່າງ ການຢືນ ການນັ່ງ ການຫຼັບ ການຕື່ນ ການເວົ້າ ການມິດ

[໘໖໖] ພິກຂຸນັ້ນ ເປັນຜູ້ປະກອບດ້ວຍອະຣິຍະສີລະຂັນ ອະຣິຍະສັນໂດດ ອະຣິຍະອິນຊີສັງວອນ ແລະ ອະຣິຍະສະຕິສຳປະຊັນຍະນີ້ແລ້ວພັກຢູ່ ເສນາສະນະອັນງຽບສະຫງັດ ຄື ປ່າເຫງົ້າໄມ້ ພູ ຊອກເຂົາ ຖໍ້າ ປ່າຊ້າ ປ່າຕຶບ ກາງແຈ້ງ ກອງເຟືອງ ພິກຂຸກັບຈາກບິນທະບາດ

ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິສະເພາະໜ້າ ພິກຂຸນັ້ນລະອະພິດຊາໃນໂລກ ມີໃຈປາສະຈາກອະພິດຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະພະຍາບາດ ແລະ ຄວາມມຸ້ງຮ້າຍ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກພະຍາບາດ ແລະ ຄວາມມຸ້ງຮ້າຍ ລະຖີນະມິດທະ (ຄວາມທໍ້ຖອຍແລະງ່ວມເຫງົາ) ເປັນຜູ້ປາສະຈາກຖີນະມິດທະ ກຳນົດແສງສະຫວ່າງ ມີສະຕິສຳປະຊັນຍະຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸຈຈະ (ຄວາມຟຸ້ງຊ່ານແລະຄວາມລຳຄານໃຈ) ໄດ້ແລ້ວ ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະຫງົບໃນພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີວິຈິກິດສາໃນກຸສົນທຳຢູ່ ຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

# ຮອຍພຣະບາດຂອງພຣະຕະຖາຄົດເຈົ້າ

[໔໕໗] ພິກຂຸນັ້ນລະນິວອນ ໕ ປະການນີ້ເຊິ່ງເປັນເຄື່ອງເສົ້າໝອງແຫ່ງຈິດແລະເປັນເຫດເຮັດປັນຍາໃຫ້ອ່ອນກຳລັງໄດ້ແລ້ວ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ຂໍ້ນີ້ເຮົາຮຽກວ່າ "ຕະຖາຄົດບົດ" ແດ່ "ຕະຖາຄົດນິເສວິດ" ແດ່ "ຕະຖາຄົດຣັນຊິດ" ແດ່ ອະຣິຍະສາວົກກໍຍັງບໍ່ຟ້າວຕັດສິນໃຈວ່າ "ພຣະຜູ້ມີພຣະພາກເຈົ້າເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຂໍ້ນີ້ເຮົາຮຽກວ່າ "ຯລຯ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາມີສະຕິ ຢູ່ເປັນສຸກ" ຂໍ້ນີ້ເຮົາຮຽກວ່າ "ຯລຯ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີສຸກ ບໍ່ມີທຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ຂໍ້ນີ້ເຮົາຮຽກວ່າ "ຕະຖາຄົດບົດ" ແດ່ "ຕະຖາຄົດນິເສວິດ" ແດ່ "ຕະຖາຄົດຣັນຊິດ" ແດ່ ອະຣິຍະສາວົກກໍຍັງບໍ່ຟ້າວຕັດສິນໃຈວ່າ "ພຣະຜູ້ມີພຣະພາກເຈົ້າເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

[໔໕໘] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກ ຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອປຸພເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດແດ່ ຯລຯ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດຢ່າງນີ້ ແມ່ນຂໍ້ນີ້ເຮົາຮຽກວ່າ "ຕະຖາຄົດບົດ" ແດ່ "ຕະຖາຄົດນິເສວິດ" ແດ່ "ຕະຖາຄົດຣັນຊິດ" ແດ່ ອະຣິຍະສາວົກກໍຍັງບໍ່ຟ້າວຕັດສິນໃຈວ່າ "ພຣະຜູ້ມີພຣະພາກເຈົ້າເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດ

ດີແລ້ວ"

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ພິກຂຸນັ້ນນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ຯລຯ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳຢ່າງນີ້ແລ້ວ ແມ່ນຂໍ້ນີ້ເຮົາຮຽກວ່າ "ຕະຖາຄົດບົດ" ແດ່ "ຕະຖາຄົດນິເສວິດ" ແດ່ "ຕະຖາຄົດຣັນຊິດ"ແດ່ ອະຣິຍະສາວົກກໍຍັງບໍ່ຟ້າວຕັດສິນໃຈວ່າ "ພຣະຜູ້ມີພຣະພາກເຈົ້າເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

[໔໙] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ພິກຂຸນັ້ນນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣທະ ນີ້ອາສະວະນິໂຣທະຄາມິນີປະຕິປະທາ" ແມ່ນຂໍ້ນີ້ເຮົາກໍຮຽກວ່າ "ຕະຖາຄົດບົດ" ແດ່ "ຕະຖາຄົດນິເສວິດ" ແດ່ "ຕະຖາຄົດຣັນຊິດ" ແດ່ ອະຣິຍະສາວົກທີ່ຍັງບໍ່ຟ້າວຕັດສິນໃຈກໍຕັດສິນໃຈໄດ້ເລີຍວ່າ "ພຣະຜູ້ມີພຣະພາກເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

ເມື່ອພິກຂຸນັ້ນຮູ້ ເຫັນແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ແມ່ນຂໍ້ນີ້ເຮົາຮຽກວ່າ "ຕະຖາຄົດບົດ" ແດ່ "ຕະຖາຄົດນິເສວິດ" ແດ່ "ຕະຖາຄົດຣັນຊິດ"ແດ່ ດ້ວຍເຫດພຽງທໍ່ນີ້ ອະຣິຍະສາວົກຈຶ່ງຕັດສິນໃຈໄດ້ວ່າ "ພຣະຜູ້ມີພຣະພາກເຈົ້າເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ" ດ້ວຍເຫດພຽງທໍ່ນີ້ ຂໍ້ຄວາມປຽບທຽບດ້ວຍຮອຍຕີນຊ້າງເປັນອັນບໍລິບູນໂດຍພິດສະດານແລ້ວ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ ຊານຸດໂສນິພາມໄດ້ຂາບທູນພຣະຜູ້ມີພຣະພາກວ່າ "ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບເໝືອນບຸກຄົນຫງາຍຂອງທີ່ຂວ້ຳ ເປີດຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍ

ທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສິກາຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຈົນຕະຫຼອດຊີວິດ”

**ຈູລະຫັດຖິປະໂທປະມະສູດທີ ໗ ຈົບ**

# ໘. ມະຫາຫັດຖິປະໂທປະມະສູດ

## ວ່າດ້ວຍອຸປະມາດ້ວຍຮອຍຕີນຊ້າງ ສູດໃຫຍ່

## ປຽບທຽບອະຣິຍະສັດກັບຮອຍຕີນຊ້າງ

[໓໐໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ທີ່ນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍດ້ວຍຄຳວ່າ “ທ່ານຜູ້ມີອາຍຸທັງຫຼາຍ” ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດໄດ້ກ່າວເລື້ອງນີ້ວ່າ

“ທ່ານຜູ້ມີອາຍຸທັງຫຼາຍ ຮອຍຕີນຂອງສັດທັງຫຼາຍຜູ້ທ່ຽວໄປເທິງແຜ່ນດິນ ຮອຍຕີນເຫຼົ່ານັ້ນທັງໝົດລວມລົງໃນຮອຍຕີນຊ້າງ ຮອຍຕີນຊ້າງຊາວໂລກກ່າວວ່າ “ເປັນຍອດຂອງຮອຍຕີນເຫຼົ່ານັ້ນ ຍ້ອນຮອຍຕີນຊ້າງເປັນຮອຍຕີນຂະໜາດໃຫຍ່” ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ນັບເຂົ້າໃນອະຣິຍະສັດ ໔

ອະຣິຍະສັດ ໔ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

[໓໐໑] ທຸກຂະອະຣິຍະສັດ ເປັນແນວໃດ?

ຄື ຊາດເປັນທຸກ ຊະຣາເປັນທຸກ ມໍລະນະເປັນທຸກ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດເປັນທຸກ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ໂດຍຫຍໍ້ ອຸປາທານຂັນ ໕ ປະການເປັນທຸກ

ອຸປາທານຂັນ ໕ ປະການ ອັນໃດແນ ຄື

໑. ຣູປູປາທານະຂັນ
໒. ສັນຍູປາທານະຂັນ
໓. ເວທະນູປາທານະຂັນ
໔. ສັງຂາຣູປາທານະຂັນ
໕. ວິນຍານູປາທານະຂັນ

ຣູປູປາທານະຂັນ ອັນໃດແດ່ ຄື

ມະຫາພູຕະຣູບ ໔ ແລະ ຣູບທີ່ອາໄສຂອງມະຫາພູຕະຣູບ ໔

ມະຫາພູຕະຣູບ ໔ ອັນໃດແດ່ ຄື

໑. ປະຖະວີທາດ
໒. ເຕໂຊທາດ
໓. ອາໂປທາດ
໔. ວາໂຍທາດ

## ປະຖະວີທາດ

[໒໐໔] ປະຖະວີທາດ ເປັນແນວໃດ?

ຄື ປະຖະວີທາດພາຍໃນກໍມີ ປະຖະວີທາດພາຍນອກກໍມີ
ປະຖະວີທາດພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບ[១] ພາຍໃນບ່ອນເປັນຂອງສະເພາະຕົນ ເປັນຂອງແຂ້ນແຂງ ເປັນຂອງຫຍາບ ໄດ້ແກ່ ຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ຫຼື ອຸປາທິນນະກະຣູບພາຍໃນອື່ນໃດ ທີ່ເປັນຂອງສະເພາະຕົນ ເປັນຂອງແຂ້ນແຂງ ເປັນຂອງຫຍາບ ນີ້ຮຽກວ່າ "ປະຖະວີທາດພາຍໃນ"

ປະຖະວີທາດພາຍໃນ ແລະ ປະຖະວີທາດພາຍນອກນີ້ ກໍເປັນປະຖະວີທາດນັ້ນເອງ ບັນດິດຄວນເຫັນປະຖະວີທາດນັ້ນ ຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ບັນດິດເມື່ອເຫັນປະຖະວີທາດນັ້ນຕາມຄວາມເປັນຈິງດ້ວຍປັນຍາອັນຊອບແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນປະຖະວີທາດ ແລະເຮັດຈິດໃຫ້ຄາຍກຳໜັດຈາກປະຖະວີທາດ

ເວລາທີ່ອາໂປທາດພາຍນອກກຳເຣີບຍ່ອມຈະມີໄດ້ ໃນເວລານັ້ນ ປະຖະວີທາດພາຍນອກຈະອັນຕະຣະທານໄປ ປະຖະວີທາດພາຍນອກເຊິ່ງໃຫຍ່ເຖິງພຽງນັ້ນ ຍັງຜາກົດເປັນຂອງບໍ່

ທ່ຽງ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຜັນແປໄປເປັນທຳມະດາ ເປັນຫຍັງ ກາຍເຊິ່ງຕັ້ງຢູ່ຊົ່ວເວລາເລັກໜ້ອຍນີ້ທີ່ຖືກຕັນຫາເຂົ້າໄປຍຶດຖືວ່າ "ເຮົາ" ວ່າ "ຂອງເຮົາ" ວ່າ "ເຮົາມີຢູ່" ຈັກບໍ່ຜາກົດເປັນຂອງບໍ່ທ່ຽງ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ແລະ ມີຄວາມຜັນໄປເປັນທຳມະດານໍ ເມື່ອເປັນແນວນີ້ ພິກຂຸນັ້ນກໍບໍ່ມີຄວາມຍຶດຖືໃນປະຖະວີທາດພາຍໃນນີ້

ຫາກຊົນເຫຼົ່າອື່ນຈະດ່າ ຕິຕຽນຢ່າງຮຸນແຮງ ບຽດບຽນພິກຂຸນັ້ນ ພິກຂຸນັ້ນຮູ້ແຈ້ງແນວນີ້ວ່າ "ທຸກຂະເວທະນາອັນເກີດຈາກໂສຕະສຳຜັດນີ້ເກີດຂຶ້ນແລ້ວແກ່ເຮົາ ແຕ່ທຸກຂະເວທະນານັ້ນອາໄສເຫດຈຶ່ງເກີດຂຶ້ນໄດ້ ບໍ່ອາໄສເຫດກໍຈະເກີດຂຶ້ນບໍ່ໄດ້ ທຸກຂະເວທະນານີ້ອາໄສອັນໃດ ຈຶ່ງເກີດຂຶ້ນໄດ້ ທຸກຂະເວທະນາອາໄສຜັດສະຈຶ່ງເກີດຂຶ້ນໄດ້" ພິກຂຸນັ້ນຍ່ອມເຫັນວ່າ "ຜັດສະບໍ່ທ່ຽງ ເວທະນາບໍ່ທ່ຽງ ສັນຍາບໍ່ທ່ຽງ ສັງຂານທັງຫຼາຍບໍ່ທ່ຽງ ວິນຍານບໍ່ທ່ຽງ" ຈິດຂອງພິກຂຸນັ້ນຍ່ອມດິ່ງໄປ ຍ່ອມຜ່ອງໃສ ດຳລົງໝັ້ນ ແລະ ນ້ອມໄປໃນອາລົມຄືທາດນັ້ນແລ

ຫາກຊົນເຫຼົ່າອື່ນ ຈະພະຍາຍາມທຳຮ້າຍພິກຂຸນັ້ນດ້ວຍອາການທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ຄື ດ້ວຍການທຳຮ້າຍດ້ວຍຝາມືແດ່ ການທຳຮ້າຍດ້ວຍກ້ອນດິນແດ່ ການທຳຮ້າຍດ້ວຍໄມ້ຄ້ອນແດ່ ການທຳຮ້າຍດ້ວຍອາວຸດແດ່ ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າ "ກາຍນີ້ເປັນທີ່ຮອງຮັບການທຳຮ້າຍດ້ວຍຝາມືແດ່ ການທຳຮ້າຍດ້ວຍກ້ອນດິນແດ່ ການທຳຮ້າຍດ້ວຍໄມ້ຄ້ອນແດ່ ການທຳຮ້າຍດ້ວຍອາວຸດແດ່" ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ໃນພຣະໂອວາດທີ່ອຸປະມາດ້ວຍເລື່ອຍ[๑]ວ່າ "ພິກຂຸທັງຫຼາຍ ຫາກພວກໂຈນຜູ້ປະພຶດຕ່ຳຊາມ ຈະເພິ່ງໃຊ້ເລື່ອຍທີ່ມີມືຈັບ ໘ ຂ້າງ ເລື່ອຍອະໄວຍະວະນ້ອຍໃຫຍ່ຂອງທ່ານອອກກໍຕາມ ຜູ້ມີໃຈຄິດຮ້າຍແມ່ນໃນພວກໂຈນນັ້ນ ກໍບໍ່ຊື່ວ່າເຮັດຕາມຄຳສັ່ງສອນຂອງເຮົາ ຍ້ອນເຫດທີ່ອົດກັ້ນບໍ່ໄດ້ນັ້ນ" ອັນໜຶ່ງ ຄວາມພຽນ ທີ່ເຮົາເລີ່ມເຮັດແລ້ວຈັກບໍ່ຫຍ່ອນຍານ ສະຕິທີ່ເຮົາຕັ້ງໄວ້ແລ້ວຈັກບໍ່ຫຼົງລືມ ກາຍທີ່ເຮົາເຮັດໃຫ້ສະຫງົບແລ້ວຈັກບໍ່ກະວົນກະວາຍ ຈິດທີ່ເຮົາເຮັດໃຫ້ຕັ້ງໝັ້ນແລ້ວຈັກມີອາລົມແນ່ວແນ່ ເວລານີ້ ຕໍ່ໃຫ້ມີການທຳຮ້າຍດ້ວຍຝາມື ການທຳຮ້າຍດ້ວຍກ້ອນດິນ ການທຳຮ້າຍດ້ວຍໄມ້ຄ້ອນ ຫຼື ການທຳຮ້າຍດ້ວຍອາວຸດທີ່ກາຍນີ້ກໍຕາມ ເຮົາກໍຈະເຮັດຕາມຄຳສອນຂອງພຣະພຸດທະເຈົ້າທັງຫຼາຍນີ້ໃຫ້ຈົງໄດ້

ເມື່ອພິກຂຸນັ້ນ ຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະ ຣະນຶກເຖິງພຣະສົງຢູ່ແນວນີ້ຢູ່ ຖ້າອຸເປກຂາອັນອາໄສກຸສົນທຳຍັງດຳລົງຢູ່ບໍ່ໄດ້ ພິກຂຸນັ້ນຍ່ອມສະລົດຫົດຫູ່ໃຈຍ້ອນເຫດນັ້ນວ່າ "ບໍ່ເປັນລາບຂອງເຮົາແລ້ວນໍ ລາບບໍ່ມີແກ່ເຮົານໍ ເຮົາໄດ້ບໍ່ດີແລ້ວນໍ ການໄດ້ດ້ວຍດີບໍ່ມີແກ່ເຮົານໍ ທີ່ເຮົາຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະ ຣະນຶກເຖິງພຣະສົງຢູ່ແນວນີ້ ອຸເປກຂາອັນອາໄສກຸສົນທຳຍັງດຳລົງຢູ່ບໍ່ໄດ້" ປຽບເໝືອນ ຍິງສະໃພ້ເຫັນພໍ່ຜົວແລ້ວຍ່ອມສະລົດຫົດຫູ່ໃຈ ແມ່ນສັນໃດ ພິກຂຸນັ້ນກໍຄືກັນສັນນັ້ນ ເມື່ອຣະນຶກເຖິງພຣະພຸດທະ

ເຈົ້າ ຣະນຶກເຖິງພຣະທຳ ແລະ ຣະນຶກເຖິງພຣະສົງຢູ່ແນວນີ້ ຖ້າອຸເປກຂາອັນອາໄສກຸສົນທຳຍັງດຳລົງຢູ່ບໍ່ໄດ້ ຍ່ອມສະລົດຫົດຫູ່ໃຈຍ້ອນເຫດນັ້ນວ່າ "ບໍ່ເປັນລາບຂອງເຮົານໍ ລາບບໍ່ມີແກ່ເຮົານໍ ເຮົາໄດ້ບໍ່ດີແລ້ວນໍ ການໄດ້ດ້ວຍດີບໍ່ມີແກ່ເຮົານໍ ທີ່ເຮົາຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະຣະນຶກເຖິງພຣະສົງຢູ່ຢ່າງນີ້ ອຸເປກຂາອັນອາໄສກຸສົນທຳຍັງດຳລົງຢູ່ບໍ່ໄດ້"

ທ່ານຜູ້ມີອາຍຸທັງຫຼາຍ ເມື່ອພິກຂຸນັ້ນຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະຣະນຶກເຖິງພຣະສົງຢູ່ຢ່າງນີ້ ຖ້າອຸເປກຂາອັນອາໄສກຸສົນທຳດຳລົງຢູ່ໄດ້ດ້ວຍດີ ພິກຂຸນັ້ນຍ່ອມພໍໃຈຍ້ອນເຫດນັ້ນ ດ້ວຍເຫດພຽງທໍ່ນີ້ ພິກຂຸໄດ້ຊື່ວ່າ ເຮັດຕາມຄຳສັ່ງສອນ ຂອງພຣະພຸດທະເຈົ້າທັງຫຼາຍຢ່າງແທ້ຈິງແລ້ວ

## ອາໂປທາດ

[໓໐໓] ອາໂປທາດ ເປັນແນວໃດ?

ຄື ອາໂປທາດພາຍໃນກໍມີ ອາໂປທາດພາຍນອກກໍມີ

ອາໂປທາດພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບພາຍໃນບ່ອນເປັນຂອງສະເພາະຕົນ ເປັນຂອງເອີບອາບ ມີຄວາມເອີບອາບ ໄດ້ແກ່ ບີ ຂີ້ກະເທີ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ ຫຼື ອຸປາທິນນະກະຣູບພາຍໃນອື່ນໃດ ທີ່ເປັນຂອງສະເພາະຕົນ ເປັນຂອງເອີບອາບ ມີຄວາມເອີບອາບ ນີ້ຮຽກວ່າ ອາໂປທາດພາຍໃນ

ອາໂປທາດພາຍໃນ ແລະ ອາໂປທາດພາຍນອກນີ້ ກໍເປັນອາໂປທາດນັ້ນເອງ ບັນດິດເພິ່ງເຫັນອາໂປທາດນັ້ນ ຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເມື່ອເຫັນອາໂປທາດນັ້ນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນອາໂປທາດ ແລະ ເຮັດຈິດໃຫ້ຄາຍກຳໜັດຈາກອາໂປທາດ

ເວລາທີ່ອາໂປທາດພາຍນອກກຳເຣີບຍ່ອມຈະມີໄດ້ ອາໂປທາດພາຍນອກນັ້ນຍ່ອມພັດພາເຮືອນໄປແດ່ ນິຄົມໄປແດ່ ເມືອງໄປແດ່ ຊົນນະບົດໄປແດ່ ບາງສ່ວນຂອງຊົນນະບົດໄປແດ່

ເວລາທີ່ນ້ຳໃນມະຫາສະມຸດເລິກລົງໄປ ໑໐໐ ໂຍດແດ່ ໒໐໐ ໂຍດແດ່ ໓໐໐ ໂຍດແດ່ ໔໐໐ ໂຍດແດ່ ໕໐໐ ໂຍດແດ່ ໖໐໐ ໂຍດແດ່ ໗໐໐ ໂຍດແດ່ ຍ່ອມຈະມີໄດ້

ເວລາທີ່ນ້ຳໃນມະຫາສະມຸດຂັງຢູ່ ໗ ຊົ່ວລຳຕານແດ່ ໖ ຊົ່ວລຳຕານແດ່ ໕ ຊົ່ວລຳຕານ

ແດ່ ໔ ຊົ່ວລຳຕານແດ່ ໓ ຊົ່ວລຳຕານແດ່ ໒ ຊົ່ວລຳຕານແດ່ ໑ ຊົ່ວລຳຕານແດ່ ຍ່ອມຈະມີໄດ້

ເວລາທີ່ນ້ຳໃນມະຫາສະມຸດຂັງຢູ່ ໗ ຊົ່ວບຸຣຸດແດ່ ໖ ຊົ່ວບຸຣຸດແດ່ ໕ ຊົ່ວບຸຣຸດແດ່ ໔ ຊົ່ວບຸຣຸຣົດແດ່ ໓ ຊົ່ວບຸຣຸຣົດແດ່ ໒ ຊົ່ວບຸຣຸດແດ່ ໑ ຊົ່ວບຸຣຸດແດ່ ຍ່ອມຈະມີໄດ້

ເວລາທີ່ນ້ຳໃນມະຫາສະມຸດຂັງຢູ່ເຄິ່ງຊົ່ວບຸຣຸດແດ່ ປະມານພຽງແອວແດ່ ປະມານພຽງຫົວເຂົ່າແດ່ ປະມານພຽງຂໍ້ຕີນແດ່ ຍ່ອມຈະມີໄດ້

ເວລາທີ່ນ້ຳໃນມະຫາສະມຸດບໍ່ມີພໍປຽກຂໍ້ນິ້ວມື ກໍຍ່ອມຈະມີໄດ້

ອາໂປທາດພາຍນອກເຊິ່ງມີຫຼາຍເຖິງພຽງນັ້ນ ຍັງຜາກົດເປັນຂອງບໍ່ທ່ຽງ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຜັນຜັນໄປເປັນທຳມະດາ ແລ້ວເປັນຫຍັງກາຍເຊິ່ງຕັ້ງຢູ່ຊົ່ວເວລາເລັກໜ້ອຍທີ່ຖືກຕັນຫາເຂົ້າໄປຍຶດຖືວ່າ "ເຮົາ" ວ່າ "ຂອງເຮົາ" ວ່າ "ເຮົາມີຢູ່" ຈັກບໍ່ຜາກົດເປັນຂອງບໍ່ທ່ຽງ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປ ເປັນທຳມະດາ ແລະ ມີຄວາມຜັນໄປເປັນທຳມະດານໍ ເມື່ອເປັນແນວນີ້ ພິກຂຸນັ້ນ ກໍບໍ່ມີຄວາມຍຶດຖືໃນອາໂປທາດພາຍນອກນີ້ ຯລຯ ເມື່ອພິກຂຸນັ້ນ ຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະຣະນຶກເຖິງພຣະສົງຢູ່ຢ່າງນີ້ ອຸເປກຂາອັນອາໄສກຸສົນທຳດຳລົງຢູ່ໄດ້ດ້ວຍດີ ພິກຂຸນັ້ນຍ່ອມພໍໃຈຍ້ອນເຫດນັ້ນ ດ້ວຍເຫດພຽງທີ່ນີ້ ພິກຂຸໄດ້ຊື່ວ່າ ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າຢ່າງແທ້ຈິງ

## ເຕໂຊທາດ

[໓໐໔] ເຕໂຊທາດ ເປັນແນວໃດ?

ຄື ເຕໂຊທາດພາຍໃນກໍມີ ເຕໂຊທາດພາຍນອກກໍມີ
ເຕໂຊທາດທີ່ເປັນພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບພາຍໃນ ທີ່ເປັນຂອງສະເພາະຕົນ ເປັນຂອງຮ້ອນຮົນ ມີຄວາມຮ້ອນຮົນ ໄດ້ແກ່ທຳມະຊາດທີ່ເປັນເຄື່ອງເຮັດຮ່າງກາຍໃຫ້ອົບອຸ່ນ ທຳມະຊາດທີ່ເປັນເຄື່ອງເຮັດຮ່າງກາຍໃຫ້ຊຸດໂຊມ ທຳມະຊາດທີ່ເປັນເຄື່ອງເຮັດຮ່າງກາຍໃຫ້ຮ້ອນຮົນ ທຳມະຊາດທີ່ເປັນເຄື່ອງຍ່ອຍສິ່ງທີ່ກິນແລ້ວ ດື່ມແລ້ວ ຫຍ້ຳແລ້ວ ແລະ ຊິມຣົດແລ້ວ ຫຼື ອຸປາທິນນະກະຣູບພາຍໃນອື່ນໃດ ທີ່ເປັນຂອງສະເພາະຕົນ ເປັນຂອງຮ້ອນຮົນ ມີຄວາມຮ້ອນຮົນ ນີ້ຮຽກວ່າ ເຕໂຊທາດພາຍໃນ

ເຕໂຊທາດພາຍໃນ ແລະ ເຕໂຊທາດພາຍນອກນີ້ ກໍເປັນເຕໂຊທາດນັ້ນເອງ ບັນດິດ

ເພິ່ງເຫັນເຕໂຊທາດນັ້ນຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງແນວນີ້ ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ບັນດິດເມື່ອເຫັນເຕໂຊທາດນັ້ນ ຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນເຕໂຊທາດ ແລະ ເຮັດຈິດໃຫ້ຄາຍກຳໜັດຈາກເຕໂຊທາດ

ເວລາທີ່ເຕໂຊທາດພາຍນອກກຳເຣິບຍ່ອມຈະມີໄດ້ ເຕໂຊທາດພາຍນອກນັ້ນຍ່ອມໄໝ້ເຮືອນແດ່ ນິຄົມແດ່ ນະຄອນແດ່ ຊົນນະບົດແດ່ ບາງສ່ວນຂອງຊົນນະບົດແດ່ ເຕໂຊທາດພາຍນອກນັ້ນ (ລາມ) ມາເຖິງຫຍ້າສົດ ຫົນທາງ ພູ ນ້ຳ ຫຼື ພູມິພາກທີ່ໜ້າອອນຊອນແລ້ວເມື່ອບໍ່ມີເຊື້ອ ຍ່ອມດັບໄປເອງ ເວລາທີ່ຊົນທັງຫຼາຍສະແຫວງຫາໄຟດ້ວຍຂົນໄກ່ແດ່ ດ້ວຍການຂູດໜັງແດ່ ຍ່ອມຈະມີໄດ້

ເຕໂຊທາດພາຍນອກເຊິ່ງໃຫຍ່ເຖິງພຽງນັ້ນ ຍັງຜາກົດເປັນຂອງບໍ່ທ່ຽງ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຜັນແປໄປເປັນທຳມະດາ ແລ້ວເປັນຫຍັງ ກາຍເຊິ່ງຕັ້ງຢູ່ຊົ່ວເວລາເລັກນ້ອຍທີ່ຖືກຕັນຫາເຂົ້າໄປຍຶດຖືວ່າ "ເຮົາ" ວ່າ "ຂອງເຮົາ" ວ່າ "ເຮົາມີຢູ່" ຈັກບໍ່ຜາກົດ ເປັນຂອງບໍ່ທ່ຽງ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປ ເປັນທຳມະດາ ມີຄວາມຜັນຜັນໄປເປັນທຳມະດານໍ ເມື່ອເປັນແນວນີ້ ພິກຂຸນັ້ນກໍບໍ່ມີຄວາມຍຶດຖືໃນເຕໂຊທາດພາຍນອກນີ້ ຯລຯ ເມື່ອພິກຂຸນັ້ນ ຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳແລະຣະນຶກເຖິງພຣະສົງຢູ່ແນວນີ້ ຖ້າອຸເປກຂາອັນອາໄສກຸສົນທຳດຳລົງຢູ່ໄດ້ດ້ວຍດີ ພິກຂຸນັ້ນຍ່ອມພໍໃຈຍ້ອນເຫດນັ້ນ ດ້ວຍເຫດພຽງທໍ່ນີ້ ພິກຂຸໄດ້ຊື່ວ່າ ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າຢ່າງແທ້ຈິງ

## ວາໂຍທາດ

[໓໐໔] ວາໂຍທາດ ເປັນແນວໃດ?

ຄື ວາໂຍທາດພາຍໃນກໍມີ ວາໂຍທາດພາຍນອກກໍມີ

ວາໂຍທາດພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບພາຍໃນ ທີ່ເປັນຂອງສະເພາະຕົນ ເປັນຂອງພັດໄປມາ ມີຄວາມພັດໄປມາ ໄດ້ແກ່ ລົມທີ່ພັດຂຶ້ນເບື້ອງເທິງ ລົມທີ່ພັດລົງເບື້ອງຕ່ຳ ລົມໃນທ້ອງ ລົມໃນລຳໄສ້ ລົມທີ່ແລ່ນໄປຕາມອະໄວຍະວະນ້ອຍໃຫຍ່ ລົມຫັນໃຈເຂົ້າ ລົມຫັນໃຈອອກ ຫຼື ອຸປາທິນນະກະຣູບພາຍໃນອື່ນໃດ ທີ່ເປັນຂອງສະເພາະຕົນ ເປັນຂອງພັດໄປມາ ມີຄວາມພັດໄປມາ ນີ້ຮຽກວ່າວາໂຍທາດພາຍໃນ

ວາໂຍທາດພາຍໃນ ແລະ ວາໂຍທາດພາຍນອກນີ້ ກໍເປັນວາໂຍທາດນັ້ນເອງ ບັນດິດເພິ່ງ ເຫັນວາໂຍທາດນັ້ນ ຕາມຄວາມເປັນຈິງດ້ວຍປັນຍາອັນຖືກຕ້ອງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ບັນດິດເມື່ອເຫັນວາໂຍທາດນັ້ນ ຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນວາໂຍທາດ ແລະເຮັດຈິດໃຫ້ຄາຍກຳໜັດ ຈາກວາໂຍທາດ

ເວລາທີ່ວາໂຍທາດພາຍນອກກຳເຮີບຍ່ອມຈະມີໄດ້ ວາໂຍທາດພາຍນອກນັ້ນຍ່ອມພັດພາ ເຮືອນໄປແດ່ ນິຄົມໄປແດ່ ນະຄອນໄປແດ່ ຊົນນະບົດໄປແດ່ ບາງສ່ວນຂອງຊົນນະບົດໄປແດ່

ເວລາທີ່ຊົນທັງຫຼາຍສະແຫວງຫາລົມດ້ວຍວີໃບຕານແດ່ ດ້ວຍວີສຳລັບວີໄຟແດ່ ໃນເດືອນສຸດທ້າຍແຫ່ງລະດູຮ້ອນ ແມ່ນໃນບ່ອນຊາຍຄາ ຫຍ້າທັງຫຼາຍກໍບໍ່ເໜັງຕີງ ຍ່ອມຈະມີໄດ້

ວາໂຍທາດພາຍນອກເຊິ່ງໃຫຍ່ເຖິງພຽງນັ້ນຍັງຜາກົດເປັນຂອງບໍ່ທ່ຽງ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຜັນແປໄປເປັນທຳມະດາ ເປັນຫຍັງກາຍ ເຊິ່ງຕັ້ງຢູ່ຊົ່ວເວລາເລັກໜ້ອຍນີ້ທີ່ຖືກຕັນຫາເຂົ້າໄປຍຶດຖືວ່າ "ເຮົາ" ວ່າ "ຂອງເຮົາ" ວ່າ "ເຮົາ ມີຢູ່" ຈັກບໍ່ຜາກົດເປັນຂອງບໍ່ທ່ຽງ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຜັນແປໄປເປັນທຳມະດານໍ ເມື່ອເປັນແນວນີ້ ພິກຂຸນັ້ນ ກໍບໍ່ມີຄວາມ ຍຶດຖືໃນວາໂຍທາດພາຍນອກນີ້

ຫາກຊົນເຫຼົ່າອື່ນຈະດ່າ ຕຳໜິ ເວົ້າທັ່ງໃສ່ ບຽດບຽນພິກຂຸນັ້ນ ພິກຂຸນັ້ນ ຮູ້ແຈ້ງແນວນີ້ວ່າ "ທຸກຂະເວທະນາອັນເກີດຈາກໂສຕະສຳຜັດນີ້ເກີດຂຶ້ນແລ້ວແກ່ເຮົາ ແຕ່ທຸກຂະເວທະນາ ນັ້ນອາໄສເຫດຈຶ່ງເກີດຂຶ້ນໄດ້ ບໍ່ອາໄສເຫດກໍຈະເກີດຂຶ້ນບໍ່ໄດ້ ທຸກຂະເວທະນານີ້ອາໄສອັນໃດຈຶ່ງເກີດຂຶ້ນໄດ້ ທຸກຂະເວທະນານີ້ອາໄສຜັດສະຈຶ່ງເກີດຂຶ້ນໄດ້" ພິກຂຸນັ້ນຍ່ອມເຫັນວ່າ "ຜັດສະເປັນຂອງບໍ່ທ່ຽງ ເວທະນາເປັນຂອງບໍ່ທ່ຽງ ສັນຍາເປັນຂອງບໍ່ທ່ຽງ ສັງຂານທັງຫຼາຍເປັນຂອງບໍ່ທ່ຽງ ວິນຍານເປັນຂອງບໍ່ທ່ຽງ" ຈິດຂອງພິກຂຸນັ້ນຍ່ອມດິ່ງໄປ ຍ່ອມຜ່ອງໃສ ດຳລົງໝັ້ນແລະນ້ອມໄປໃນອາລົມຄືທາດນັ້ນແລ

## ຜູ້ເຮັດຕາມພຣະໂອວາດ

ຫາກຊົນເຫຼົ່າອື່ນຈະພະຍາຍາມທຳຮ້າຍພິກຂຸນັ້ນ ດ້ວຍອາການທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ຄື ການທຳຮ້າຍດ້ວຍຝາມືແດ່ ການທຳຮ້າຍດ້ວຍກ້ອນດິນແດ່ ການທຳຮ້າຍດ້ວຍໄມ້ຄ້ອນແດ່ ການທຳຮ້າຍດ້ວຍອາວຸດແດ່ ພິກຂຸນັ້ນ ຍ່ອມຮູ້ແຈ້ງແນວນີ້ວ່າ "ກາຍນີ້ມີສະພາບເປັນທີ່ຮອງຮັບການທຳຮ້າຍດ້ວຍຝາມືແດ່ ການທຳຮ້າຍດ້ວຍກ້ອນດິນແດ່ ການທຳຮ້າຍ

ດ້ວຍໄມ້ຄ້ອນແດ່ ການທຳຮ້າຍດ້ວຍອາວຸດແດ່" ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ໃນພຣະໂອວາດທີ່ອຸປະມາດ້ວຍເລື່ອຍ ໄວ້ວ່າ "ພິກຂຸທັງຫຼາຍ ຫາກພວກໂຈນຜູ້ປະພຶດຕໍ່າຊາມ ຈະເພິ່ງໃຊ້ເລື່ອຍທີ່ມີມືຈັບ ໒ ຂ້າງ ເລື່ອຍອະໄວຍະວະນ້ອຍໃຫຍ່ ຜູ້ມີໃຈຄິດຮ້າຍແມ່ນໃນພວກໂຈນນັ້ນ ກໍບໍ່ຊື່ວ່າ ເຮັດຕາມຄຳສັ່ງສອນຂອງເຮົາ ຍ້ອນເຫດທີ່ອົດກັ້ນບໍ່ໄດ້ນັ້ນ" ອັນໜຶ່ງ ຄວາມພຽນທີ່ເຮົາຜາຣົບແລ້ວຈັກບໍ່ຫຍ່ອນຍານ ສະຕິທີ່ເຮົາຕັ້ງໄວ້ແລ້ວຈັກບໍ່ຫຼົງລືມ ກາຍທີ່ເຮົາເຮັດໃຫ້ສະງົບແລ້ວ ຈັກບໍ່ກະວົນກະວາຍ ຈິດທີ່ເຮົາເຮັດໃຫ້ຕັ້ງໝັ້ນແລ້ວ ຈັກມີອາລົມແນ່ວແນ່ ເວລານີ້ຕໍ່ໃຫ້ມີການທຳຮ້າຍດ້ວຍຝາມື ການທຳຮ້າຍດ້ວຍກ້ອນດິນ ການທຳຮ້າຍດ້ວຍໄມ້ຄ້ອນ ຫຼື ການທຳຮ້າຍດ້ວຍອາວຸດທີ່ກາຍນີ້ກໍຕາມ ເຮົາກໍຈະເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍນີ້ໃຫ້ຈິງໄດ້

ເມື່ອພິກຂຸນັ້ນ ຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະ ຣະນຶກເຖິງພຣະສົງຢູ່ແນວນີ້ ຖ້າອຸເປກຂາອັນອາໄສກຸສົນທຳຍັງດຳລົງຢູ່ບໍ່ໄດ້ ພິກຂຸນັ້ນຍ່ອມສະລົດຫົດຫູ່ໃຈຍ້ອນເຫດນັ້ນວ່າ "ບໍ່ເປັນລາບຂອງເຮົານໍ ລາບບໍ່ມີແກ່ເຮົານໍ ເຮົາໄດ້ບໍ່ດີແລ້ວນໍ ການໄດ້ດ້ວຍດີບໍ່ມີແກ່ເຮົານໍ ທີ່ເຮົາຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະ ຣະນຶກເຖິງພຣະສົງຢູ່ແນວນີ້ ອຸເປກຂາອັນອາໄສກຸສົນທຳຍັງດຳລົງຢູ່ບໍ່ໄດ້" ປຽບເໝືອນ ຍິງສະໃພ້ ເຫັນພໍ່ຜົວແລ້ວສະລົດຫົດຫູ່ໃຈ ແມ່ນສັນໃດ ພິກຂຸນັ້ນ ກໍຄືກັນສັນນັ້ນ ເມື່ອຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະ ຣະນຶກເຖິງພຣະສົງຢູ່ແນວນີ້ ຖ້າອຸເປກຂາ ອັນອາໄສກຸສົນທຳຍັງດຳລົງຢູ່ບໍ່ໄດ້ ຍ່ອມສະລົດຫົດຫູ່ໃຈຍ້ອນເຫດນັ້ນວ່າ "ບໍ່ເປັນລາບຂອງເຮົານໍ ລາບບໍ່ມີແກ່ເຮົານໍ ເຮົາໄດ້ບໍ່ດີແລ້ວນໍ ການໄດ້ດ້ວຍດີບໍ່ມີແກ່ເຮົານໍ ທີ່ເຮົາຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະຣະນຶກເຖິງພຣະສົງຢູ່ແນວນີ້ ອຸເປກຂາອັນອາໄສກຸສົນທຳຍັງດຳລົງຢູ່ບໍ່ໄດ້"

ທ່ານຜູ້ມີອາຍຸທັງຫຼາຍ ເມື່ອພິກຂຸນັ້ນ ຣະນຶກເຖິງພຣະພຸດທະເຈົ້າ ຣະນຶກເຖິງພຣະທຳ ແລະຣະນຶກເຖິງພຣະສົງຢູ່ແນວນີ້ ອຸເປກຂາອັນອາໄສກຸສົນທຳຍັງດຳລົງຢູ່ໄດ້ດ້ວຍດີ ພິກຂຸນັ້ນພໍໃຈຍ້ອນເຫດນັ້ນ ດ້ວຍເຫດພຽງທໍ່ນີ້ ພິກຂຸໄດ້ຊື່ວ່າເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ ຢ່າງແທ້ຈິງແລ້ວ

## ປະຕິດຈະສະມຸບປັນນະທຳ

[໓໐໖] ທ່ານຜູ້ມີອາຍຸທັງຫຼາຍ ອາກາດອາໄສໄມ້ ເຄືອເຂົາ ຫຍ້າ ແລະດິນໜຽວ ມາປະກອບເຂົ້າກັນຈຶ່ງນັບວ່າ "ເຮືອນ" ແມ່ນສັນໃດ ອາກາດອາໄສກະດູກ ເອັນ ຊີ້ນ ແລະ ໜັງມາປະກອບເຂົ້ານຳກັນຈຶ່ງນັບວ່າ "ຮູບ" ສັນນັ້ນ

ຫາກຈັກຂຸທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ຮູບທີ່ເປັນອາຍະຕະນະພາຍນອກ

ບໍ່ມາ ສູ່ຄອງຈັກຂຸ ທັງຄວາມໃສ່ໃຈອັນເກີດຈາກຈັກຂຸ ແລະ ຮູບນັ້ນກໍບໍ່ມີ ວິນຍານສ່ວນທີ່ເກີດຈາກຈັກຂຸແລະຮູບນັ້ນກໍບໍ່ຜາກົດ

ຫາກຈັກຂຸທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ຮູບທີ່ເປັນອາຍະຕະນະພາຍນອກມາສູ່ຄອງຈັກຂຸ ແຕ່ຄວາມໃສ່ໃຈອັນເກີດຈາກຈັກຂຸແລະຮູບນັ້ນບໍ່ມີ ວິນຍານສ່ວນທີ່ເກີດຈາກຈັກຂຸແລະຮູບນັ້ນກໍບໍ່ຜາກົດ

ແຕ່ເມື່ອໃດ ຈັກຂຸທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ຮູບທີ່ເປັນອາຍະຕະນະພາຍນອກ ມາສູ່ຄອງຈັກຂຸ ທັງຄວາມໃສ່ໃຈອັນເກີດຈາກຈັກຂຸແລະຮູບກໍມີ ເມື່ອນັ້ນ ວິນຍານສ່ວນທີ່ເກີດຈາກຈັກຂຸແລະຮູບນັ້ນ ຍ່ອມຜາກົດດ້ວຍອາການແນວນີ້

ຮູບແຫ່ງສະພາບແນວນັ້ນຈັດເຂົ້າໃນຣູປູປາທານະຂັນ (ອຸປາທານຂັນຄືຮູບ) ເວທະນາແຫ່ງສະພາບແນວນັ້ນຈັດເຂົ້າໃນເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ) ສັນຍາແຫ່ງສະພາບແນວນັ້ນຈັດເຂົ້າໃນສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ) ສັງຂານແຫ່ງສະພາບແນວນັ້ນຈັດເຂົ້າໃນສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ) ວິນຍານແຫ່ງສະພາບແນວນັ້ນຈັດເຂົ້າໃນວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ) ພິກຂຸນັ້ນ ຍ່ອມຮູ້ແຈ້ງແນວນີ້ວ່າ "ການຮີບໂຮມ ການເຕົ້າໂຮມ ແລະ ໝວດໝູ່ແຫ່ງອຸປາທານຂັນ ໕ ປະການນີ້ ມີໄດ້ດ້ວຍປະການແນວນີ້"

ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພຣະພຸດທະພົດນີ້ໄວ້ວ່າ "ຜູ້ໃດເຫັນປະຕິດຈະສະມຸບບາດ ຜູ້ນັ້ນຊື່ວ່າ ເຫັນທຳ ຜູ້ໃດເຫັນທຳ ຜູ້ນັ້ນຊື່ວ່າ ເຫັນປະຕິດຈະສະມຸບບາດ" ອຸປາທານຂັນ ໕ ປະການນີ້ ຊື່ວ່າ ປະຕິດຈະສະມຸບປັນນະທຳ ຄວາມພໍໃຈ ຄວາມອາໄລ ຄວາມຍິນດີ ຄວາມມົກມຸ້ນຝັງໃຈໃນອຸປາທານຂັນ ໕ ປະການນີ້ ຊື່ວ່າ ທຸກຂະສະມຸໄທ ການກຳຈັດ ຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນອຸປາທານຂັນ ໕ ປະການນີ້ ຊື່ວ່າ ທຸກຂະນິໂຣທະ ດ້ວຍເຫດພຽງທໍ່ນີ້ ພິກຂຸໄດ້ຊື່ວ່າ ເຮັດຕາມຄຳສອນຂອງພຣະພຸດທະເຈົ້າຢ່າງແທ້ຈິງແລ້ວ

ຫາກ ໂສຕະ ທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ຯລຯ
ຫາກ ຄານະ ທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ຯລຯ
ຫາກ ຊິວຫາ ທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ຯລຯ
ຫາກ ກາຍ ທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ຯລຯ

ຫາກມະໂນທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ທຳມາຣົມທີ່ເປັນອາຍະຕະນະພາຍນອກບໍ່ມາສູ່ຄອງແຫ່ງມະໂນ ທັງຄວາມໃສ່ໃຈອັນເກີດຈາກມະໂນ ແລະ ທຳມາຣົມນັ້ນກໍບໍ່ມີ

ວິນຍານ ສ່ວນທີ່ເກີດຈາກມະໂນ ແລະ ທຳມາຣົມນັ້ນກໍບໍ່ຜາກົດ

ຫາກມະໂນທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ທຳມາຣົມທີ່ເປັນອາຍະຕະນະພາຍນອກມາສູ່ຄອງມະໂນ ແຕ່ຄວາມໃສ່ໃຈອັນເກີດຈາກມະໂນ ແລະ ທຳມາຣົມນັ້ນບໍ່ມີວິນຍານສ່ວນທີ່ເກີດຈາກມະໂນ ແລະ ທຳມາຣົມນັ້ນກໍບໍ່ຜາກົດ

ແຕ່ເມື່ອໃດ ມະໂນທີ່ເປັນອາຍະຕະນະພາຍໃນບໍ່ແຕກທຳລາຍ ທຳມາຣົມທີ່ເປັນອາຍະຕະນະພາຍນອກມາສູ່ຄອງມະໂນ ທັງຄວາມໃສ່ໃຈອັນເກີດຈາກມະໂນ ແລະ ທຳມາຣົມນັ້ນກໍມີ ເມື່ອນັ້ນ ວິນຍານສ່ວນທີ່ເກີດຈາກມະໂນ ແລະ ທຳມາຣົມນັ້ນ ຍ່ອມຜາກົດດ້ວຍອາການແນວນີ້

ຮູບແຫ່ງສະພາບແນວນັ້ນ ຈັດເຂົ້າໃນຣູປູປາທານະຂັນ (ອຸປາທານຂັນຄືຮູບ) ເວທະນາແຫ່ງສະພາບແນວນັ້ນ ຈັດເຂົ້າໃນເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ) ສັນຍາແຫ່ງສະພາບແນວນັ້ນ ຈັດເຂົ້າໃນສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ) ສັງຂານແຫ່ງສະພາບແນວນັ້ນ ຈັດເຂົ້າໃນສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ) ວິນຍານແຫ່ງສະພາບແນວນັ້ນ ຈັດເຂົ້າໃນວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ) ພິກຂຸນັ້ນ ຍ່ອມຮູ້ແຈ້ງແນວນີ້ວ່າ "ການຮິບໂຮມ ການເຕົ້າໂຮມ ແລະ ໝວດໝູ່ແຫ່ງອຸປາທານຂັນ ໕ ປະການນີ້ມີໄດ້ດ້ວຍປະການແນວນີ້"

ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພຣະພຸດທະພົດນີ້ໄວ້ວ່າ "ຜູ້ໃດເຫັນປະຕິດຈະສະມຸບບາດ ຜູ້ນັ້ນຊື່ວ່າເຫັນທຳ ຜູ້ໃດເຫັນທຳ ຜູ້ນັ້ນຊື່ວ່າ ເຫັນປະຕິດຈະສະມຸບບາດ" ອຸປາທານຂັນ ໕ ປະການນີ້ ຊື່ວ່າ ປະຕິດຈະສະມຸບປັນນະທຳ ຄວາມພໍໃຈ ຄວາມອາໄລ ຄວາມຍິນດີ ຄວາມມົກມຸ້ນຝັງໃຈໃນອຸປາທານຂັນ ໕ ປະການນີ້ ຊື່ວ່າທຸກຂະສະມຸໄທ ການກຳຈັດ ຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນອຸປາທານຂັນ ໕ ປະການນີ້ ຊື່ວ່າ ທຸກຂະນິໂຣທະ ດ້ວຍເຫດພຽງທໍ່ນີ້ ພິກຂຸໄດ້ຊື່ວ່າ ເຮັດຕາມຄຳສອນຂອງພຣະພຸດທະເຈົ້າຢ່າງຫຼວງຫຼາຍແລ້ວ

ທ່ານພຣະສາຣີບຸດໄດ້ກ່າວພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພາສິດຂອງທ່ານພຣະສາຣີບຸດ ດັ່ງນີ້ແລ

**ມະຫາຫັດຖີປະໂທປະມະສູດທີ ໗ ຈົບ**

# ໗. ມະຫາສາໂຣປະມະສູດ

## ວ່າດ້ວຍອຸປະມາດ້ວຍແກ່ນໄມ້ ສູດໃຫຍ່

## ງ່າແລະໃບແຫ່ງພົມມະຈັນ

[໓໐໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ເມື່ອພຣະເທວະທັດຈາກໄປແລ້ວບໍ່ດົນ ໃນເວລານັ້ນ ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພຣະເທວະທັດໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ

"ພິກຂຸທັງຫຼາຍ ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດແນວໃດ ການເຮັດທີ່ສຸດແຫ່ງກອງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນເຮັດລາບສັກກາຣະ ແລະ ຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະ ແລະ ຄວາມສັນເສີນນັ້ນ ເຂົາຈຶ່ງພໍໃຈ ແລະ ມີຄວາມຮູ້ສຶກສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາມີລາບສັກກາຣະແລະຄວາມສັນເສີນ ສ່ວນພິກຂຸອື່ນນອກນີ້ບໍ່ມີຊື່ສຽງ ມີສັກນ້ອຍ" ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງມົວເມົາ ລືມໂຕ ແລະ ຜະໝາດ ເມື່ອຜະໝາດຍ່ອມຢູ່ເປັນທຸກ

ພິກຂຸທັງຫຼາຍ ປຽບເໝືອນບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກ ເປືອກ ແລະ ເກັດໄປ ເຂົ້າໃຈງ່າແລະໃບວ່າເປັນ "ແກ່ນໄມ້" ຈຶ່ງຕັດນຳໄປ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ທ່ານຜູ້ນີ້ ບໍ່ຮູ້ຈັກແກ່ນໄມ້ ມອກ ເປືອກ ເກັດ ງ່າແລະໃບ ແທ້"

ເພາະວ່າທ່ານຜູ້ນີ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກ ເປືອກ ແລະເກັດໄປ ເຂົ້າໃຈງ່າແລະໃບວ່າ "ແກ່ນໄມ້" ຈຶ່ງຕັດນຳໄປ ອັນໜຶ່ງ ວຽກທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ" ແມ່ນສັນໃດ ກຸນລະບຸດບາງຄົນໃນໂລກນີ້ກໍຄືກັນສັນນັ້ນ ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດ

ແນວໃດ ການເຮັດທີ່ສຸດແຫ່ງກອງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນນັ້ນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາມີລາບສັກກາຣະແລະຄວາມສັນເສີນ ສ່ວນພິກຂຸອື່ນນອກນີ້ບໍ່ມີຊື່ສຽງ ມີສັກນ້ອຍ" ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງມົວເມົາ ລືມໂຕ ແລະຜະໝາດ ເມື່ອຜະໝາດຍ່ອມຢູ່ເປັນທຸກ

ພິກຂຸທັງຫຼາຍ ພິກຂຸນີ້ຕະຖາຄົດຮຽກວ່າ ຜູ້ຢຶດເອົາງ່າແລະໃບແຫ່ງພົມມະຈັນແລະເຖິງຄວາມພໍໃຈດ້ວຍງ່າແລະໃບແຫ່ງພົມມະຈັນນັ້ນ

## ເກັດແຫ່ງພົມມະຈັນ

[໓໐໗] ພິກຂຸທັງຫຼາຍ ກຸນລະບຸດລາງຄົນໃນໂລກນີ້ ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງໍາແລ້ວ ຖືກຄວາມທຸກຄອບງໍາ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດຢ່າງໃດ ການເຮັດທີ່ສຸດແຫ່ງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈແລະມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ ມົວເມົາ ບໍ່ລືມໂຕ ແລະ ບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທໍາຄວາມສົມບູນແຫ່ງສີນໃຫ້ສໍາເລັດ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາມີສີນ ມີກັນລະຍານະທໍາ ສ່ວນພິກຂຸອື່ນນອກນີ້ ເປັນຜູ້ທຸສີນ ມີບາບທໍາ" ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງມົວເມົາ ລືມໂຕ ແລະຜະໝາດ ເມື່ອຜະໝາດຍ່ອມຢູ່ເປັນທຸກ

ພິກຂຸທັງຫຼາຍ ປຽບເໝືອນ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກ ເປືອກໄປ ເຂົ້າໃຈເກັດວ່າ "ແກ່ນໄມ້" ຈຶ່ງຖາກນໍາໄປ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ທ່ານຜູ້ນີ້ ບໍ່ຮູ້ຈັກແກ່ນໄມ້ ມອກ ເປືອກ ເກັດ ງ່າແລະໃບ ແທ້ຈິງ ທ່ານຜູ້ນີ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກ ແລະເປືອກໄປ ເຂົ້າໃຈເກັດວ່າ "ແກ່ນໄມ້" ຈຶ່ງຖາກນໍາໄປ ແລະກິດທີ່ເຂົາ ຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສໍາເລັດປະໂຫຍດແກ່ເຂົາ" ແມ່ນສັນໃດ ກຸນລະບຸດບາງຄົນໃນໂລກນີ້ກໍຄືກັນສັນນັ້ນ ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຄອບງໍາແລ້ວ ຖືກຄວາມທຸກຄອບງໍາ ມີຄວາມ

ທຸກຢູ່ສະເພາະໜ້າແລ້ວ ເຮັດແນວໃດການເຮັດທີ່ສຸດແຫ່ງ ກອງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນ ໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈ ແລະ ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມ ຜູ້ອື່ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສີນໃຫ້ສຳເລັດ ຍ້ອນຄວາມສົມບູນ ແຫ່ງສີນນັ້ນ ເຂົາຈຶ່ງມີຄວາມພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາມີສີນ ມີກັນລະຍານະທຳ ສ່ວນພິກຂຸອື່ນນອກນີ້ ເປັນຜູ້ ທຸສີນ ມີບາບທຳ" ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງມົວເມົາ ລືມໂຕ ແລະ ຜະໝາດ ເມື່ອຜະໝາດແລ້ວຍ່ອມຢູ່ເປັນທຸກ

ພິກຂຸທັງຫຼາຍ ພິກຂຸນີ້ ຕະຖາຄົດຮຽກວ່າ ຜູ້ຍຶດເອົາເກັດແຫ່ງພົມມະຈັນແລະເຖິງຄວາມພໍໃຈດ້ວຍເກັດແຫ່ງພົມມະຈັນນັ້ນ

## ເປືອກແຫ່ງພົມມະຈັນ

[໓໐໙] ພິກຂຸທັງຫຼາຍ ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດແລະອຸປາຍາດຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດແນວໃດ ການເຮັດທີ່ສຸດແຫ່ງກອງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະ ແລະ ຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈ ແລະ ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສີນ ໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະ ບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສະມາທິໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງພໍໃຈ ແລະມີຄວາມຮູ້ສຶກສົມຫວັງ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາ ມີຈິດຕັ້ງໝັ້ນ ມີຈິດມີອາລົມແນ່ວແນ່ ສ່ວນພິກຂຸອື່ນນອກນີ້ມີຈິດບໍ່ຕັ້ງໝັ້ນ ມີຈິດຟັ່ນແປ" ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງມົວເມົາ ລືມໂຕ ແລະ ຜະໝາດ ເມື່ອຜະໝາດ ຍ່ອມຢູ່ເປັນທຸກ

ພິກຂຸທັງຫຼາຍ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຍືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ແລະ ນອກໄປ ເຂົ້າໃຈເປືອກວ່າ "ແກ່ນ

ໄມ້” ຈຶ່ງຖາກນຳໄປ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ “ທ່ານຜູ້ນີ້ ບໍ່ຮູ້ຈັກແກ່ນໄມ້ ມອກ ເປືອກ ເກັດ ງ່າແລະໃບ ແທ້ຈິງ ທ່ານຜູ້ນີ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ແລະມອກໄປ ເຂົ້າໃຈເປືອກວ່າ “ແກ່ນໄມ້” ຈຶ່ງຖາກນຳໄປ ແລະ ກິດທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ” ແມ່ນສັນໃດ ກຸນລະບຸດລາງຄົນໃນໂລກນີ້ ກໍສັນນັ້ນ ຄືກັນ ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ “ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຄອບງຳແລ້ວ ຖືກຄວາມທຸກ ຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດຢ່າງໃດ ການເຮັດທີ່ສຸດແຫ່ງກອງທຸກທັງໝົດ ນີ້ຈະເພິ່ງມີໄດ້” ເຂົາບວດແລ້ວຢ່າງນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈແລະມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະ ບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສີນໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະ ບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສະມາທິໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ “ເຮົາມີຈິດຕັ້ງໝັ້ນ ມີຈິດມີອາລົມແນ່ວແນ່ ສ່ວນພິກຂຸນອກນີ້ມີຈິດບໍ່ຕັ້ງໝັ້ນ ມີຈິດແປຜັນ” ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງມົວເມົາ ລືມໂຕ ແລະຜະໝາດ ເມື່ອຜະໝາດຍ່ອມຢູ່ເປັນທຸກ

ພິກຂຸທັງຫຼາຍ ພິກຂຸນີ້ຕະຖາຄົດຮຽກວ່າ ຜູ້ຢຶດເອົາເປືອກແຫ່ງພົມມະຈັນແລະເຖິງຄວາມພໍໃຈດ້ວຍເປືອກແຫ່ງພົມມະຈັນນັ້ນ

## ມອກແຫ່ງພົມມະຈັນ

[໓໑໐] ພິກຂຸທັງຫຼາຍ ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ “ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດແນວໃດ ການເຮັດທີ່ສຸດແຫ່ງກອງທຸກທັງໝົດນີ້ຈະເພິ່ງມີໄດ້” ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈແລະມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ ມົວເມົາ ບໍ່ລືມໂຕ ແລະ ບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສີນໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງ

ສີນນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສະມາທິໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມເຮັດຍານທັດສະນະ[๑] ໃຫ້ສຳເລັດ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາຮູ້ ເຮົາເຫັນຢູ່ ສ່ວນພິກຂຸອື່ນນອກນີ້ບໍ່ຮູ້ ບໍ່ເຫັນຢູ່" ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງມົວເມົາ ລືມໂຕ ແລະຜະໝາດ ເມື່ອຜະໝາດຍ່ອມຢູ່ເປັນທຸກ

ພິກຂຸທັງຫຼາຍ ປຽບເໝືອນ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ໄປ ເຂົ້າໃຈນອກວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ທ່ານຜູ້ນີ້ບໍ່ຮູ້ຈັກແກ່ນໄມ້ ນອກ ເປືອກ ເກັດ ງ່າແລະໃບ ແທ້ຈິງ ທ່ານຜູ້ນີ້ຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄປ ເຂົ້າໃຈນອກວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ແລະ ກິດທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດ ແກ່ເຂົາ" ແມ່ນສັນໃດ ກຸນລະບຸດບາງຄົນໃນໂລກນີ້ກໍຄືກັນສັນນັ້ນ ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດຢ່າງໃດການເຮັດທີ່ສຸດແຫ່ງກອງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວຢ່າງນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈແລະມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສີນໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕແລະບໍ່ຜະໝາດ ເມື່ອບໍ່ຜະໝາດແລ້ວຍ່ອມທຳຄວາມສົມບູນແຫ່ງສະມາທິໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມເຮັດຍານທັດສະນະໃຫ້ສຳເລັດ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາຮູ້ ເຮົາເຫັນຢູ່ ສ່ວນພິກຂຸອື່ນນອກນີ້ບໍ່ຮູ້ ບໍ່ເຫັນຢູ່" ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງມົວເມົາ ລືມໂຕ

ແລະຜະໝາດ ເມື່ອຜະໝາດຍ່ອມຢູ່ເປັນທຸກ

ພິກຂຸທັງຫຼາຍ ພິກຂຸນີ້ ຕະຖາຄົດຮຽກວ່າ ຜູ້ຢຶດເອົາເນອກແຫ່ງພົມມະຈັນ ແລະເຖິງຄວາມພໍໃຈດ້ວຍມອກແຫ່ງພົມມະຈັນນັ້ນ

## ແກ່ນແຫ່ງພົມມະຈັນ

[໓໑໑] ພິກຂຸທັງຫຼາຍ ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດຢ່າງໃດ ການເຮັດທີ່ສຸດແຫ່ງກອງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວຢ່າງນັ້ນ ເຮັດລາບສັກກາຣະ ແລະ ຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈແລະມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ

ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສິນໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສິນນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສິນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສິນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງ ສະມາທິໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະ ບໍ່ຜະໝາດ ເມື່ອບໍ່ຜະໝາດ ຍ່ອມເຮັດຍານທັດສະນະໃຫ້ສຳເລັດ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກ ຍັງບໍ່ສົມຫວັງ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະ ບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມເຮັດ ອະສະມະຍະວິໂມກໃຫ້ສຳເລັດ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນ ຈະເພິ່ງເສື່ອມຈາກອະສະມະຍະວິມຸດຕິນັ້ນ

ພິກຂຸທັງຫຼາຍ ປຽບເໝືອນ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ຮູ້ແກ່ນໄມ້ວ່າ "ແກ່ນໄມ້" ຈຶ່ງຕັດນຳໄປ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ທ່ານຜູ້ນີ້ ຮູ້ຈັກແກ່ນໄມ້ ມອກ ເປືອກ ເກັດ ງ່າແລະໃບແທ້ຈິງ ທ່ານຜູ້ນີ້ຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ຮູ້ແກ່ນໄມ້ວ່າ "ແກ່ນໄມ້" ຈຶ່ງຕັດນຳໄປ ແລະ ກິດທີ່ເຂົາຈະຕ້ອງ ໃຊ້ແກ່ນໄມ້ເຮັດຈັກສຳເລັດປະໂຫຍດແກ່ເຂົາ" ແມ່ນສັນໃດ ກຸນລະບຸດບາງຄົນໃນໂລກນີ້ ກໍຄືກັນສັນນັ້ນ ມີ

ສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດຢ່າງໃດ ການເຮັດທີ່ສຸດແຫ່ງກອງທຸກ ທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວຢ່າງນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈແລະມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສີນໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມທຳຄວາມສົມບູນແຫ່ງສະມາທິໃຫ້ສຳເລັດ ຍ້ອນຄວາມ ສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມ ສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມເຮັດຍານທັດສະນະໃຫ້ສຳເລັດ ຍ້ອນຍານທັສສະນະນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງບໍ່ມົວເມົາ ບໍ່ລືມໂຕ ແລະບໍ່ຜະໝາດ ເມື່ອບໍ່ຜະໝາດຍ່ອມເຮັດອະສະມະຍະວິໂມກໃຫ້ສຳເລັດ ເປັນໄປ ບໍ່ໄດ້ເລີຍທີ່ພິກຂຸນັ້ນຈະເພິ່ງເສື່ອມຈາກອະສະມະຍະວິມຸດຕິນັ້ນ

ພິກຂຸທັງຫຼາຍ ດັ່ງພັນນາມາຢ່າງນີ້ ພົມມະຈັນນີ້ຈຶ່ງບໍ່ແມ່ນມີລາບສັກກາຣະແລະຄວາມສັນເສີນເປັນອານິສົງ (ຜົນທີ່ມຸ້ງໝາຍ) ບໍ່ແມ່ນມີຄວາມສົມບູນແຫ່ງສີນເປັນອານິສົງ ບໍ່ແມ່ນມີຄວາມສົມບູນແຫ່ງສະມາທິເປັນອານິສົງ ບໍ່ແມ່ນມີຍານທັດສະນະເປັນອານິສົງ ແຕ່ພົມມະຈັນນີ້ມີເຈໂຕວິມຸດຕິອັນບໍ່ກຳເຣິບເປັນເປົ້າໝາຍ ເປັນແກ່ນ ເປັນບ່ອນສຸດ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາສາໂຣປະມະສູດທີ ໗ ຈົບ**

# ๑๐. ຈູລະສາໂຣປະມະສູດ

## ວ່າດ້ວຍອຸປະມາດ້ວຍແກ່ນໄມ້ ສູດນ້ອຍ

[๓๑๘] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພາມຊື່ປິງຄະລະໂກດສະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວຈຶ່ງນັ່ງຢູ່ບ່ອນສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ທ່ານພຣະໂຄດົມ ສະມະນະພາມເຫຼົ່ານີ້ ເປັນເຈົ້າໝູ່ ເຈົ້າຄະນະ ເປັນຄະນາຈານ ມີຊື່ສຽງ ມີຍົດ ເປັນເຈົ້າລັດທິ ຊົນເປັນຈຳນວນຫຼາຍສົມມຸດວ່າ ເປັນຄົນດີ ຄື ປູຣະນະກັດສະປະ[๑] ມັກຂະລິໂຄສານ[๒] ອະຊິຕະເກສະກຳພົນ[๓] ປກຸທະກັດຈາຍະນະ[๔] ສັນຊັຍເວລັດຖະບຸດ[๕] ນິຄົນນາຕະບຸດ[๖] ສະມະນະພາມເຫຼົ່ານັ້ນທັງໝົດຮູ້ຢ່າງແຈ່ມແຈ້ງ ຕາມປະຕິຍານຂອງຕົນ ໆ ຫຼືທຸກຄົນບໍ່ຮູ້ຢ່າງແຈ່ມແຈ້ງເລີຍ ຫຼືວ່າ ລາງພວກຮູ້ຢ່າງແຈ່ມແຈ້ງ ລາງພວກບໍ່ຮູ້ຢ່າງແຈ່ມແຈ້ງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຢ່າເລີຍ ພາມ ຂໍ້ທີ່ວ່າສະມະນະພາມພວກນັ້ນທັງໝົດຮູ້ຢ່າງແຈ່ມແຈ້ງ ຕາມປະຕິຍານຂອງຕົນ ໆ ຫຼື ທຸກຄົນບໍ່ຮູ້ຢ່າງແຈ່ມແຈ້ງເລີຍ ຫຼືວ່າ ລາງພວກຮູ້ຢ່າງແຈ່ມແຈ້ງ ລາງພວກບໍ່ຮູ້ຢ່າງແຈ່ມແຈ້ງນັ້ນ ຈົ່ງງົດໄວ້ກ່ອນເທີ້ນ ເຮົາຈັກສະແດງທຳແກ່ທ່ານ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ປິງຄະລະໂກດສະພາມທູນສະໜອງຮັບພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

### ບຸກຄົນຜູ້ສະແຫວງຫາແກ່ນໄມ້

[๓๑๙] "ພາມ ປຽບເໝືອນ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກ ເປືອກ ແລະເກັດໄປ ເຂົ້າໃຈງ່າແລະໃບວ່າ "ແກ່ນໄມ້" ຈຶ່ງຕັດນຳໄປ ບຸຣຸດຜູ້ມີຕາດີ ເຫັນເຂົາແລ້ວຈະເພິ່ງກ່າວແບບນີ້ວ່າ "ທ່ານຜູ້ນີ້ບໍ່ຮູ້ຈັກແກ່ນໄມ້ ມອກ ເປືອກ ເກັດ ງ່າແລະໃບ ແທ້ຈິງ ທ່ານຜູ້ນີ້ຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກ ເປືອກແລະເກັດໄປ ເຂົ້າໃຈງ່າແລະໃບວ່າ "ແກ່ນໄມ້" ຈຶ່ງຕັດນຳໄປ ແລະກິດທີ່

ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ"

[໓໑໔] ອີກແນວໜຶ່ງ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກ ແລະເປືອກໄປ ເຂົ້າໃຈເກັດວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ທ່ານຜູ້ນີ້ບໍ່ຮູ້ຈັກແກ່ນໄມ້ ມອກ ເປືອກ ເກັດ ງ່າແລະໃບ ແທ້ຈິງ ທ່ານຜູ້ນີ້ຜູ້ຕ້ອງການ ແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກ ແລະເປືອກໄປ ເຂົ້າໃຈເກັດວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ວຽກທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ"

[໓໑໕] ອີກແນວໜຶ່ງ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ແລະມອກໄປ ເຂົ້າໃຈເປືອກວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ທ່ານຜູ້ນີ້ບໍ່ຮູ້ຈັກແກ່ນໄມ້ ມອກ ເປືອກ ເກັດ ງ່າແລະໃບ ແທ້ຈິງ ທ່ານຜູ້ນີ້ຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ແລະ ມອກໄປເຂົ້າໃຈເປືອກວ່າ "ແກ່ນໄມ້" ຈຶ່ງຖາກນຳໄປແລະກິດ ທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ"

[໓໑໖] ອີກແນວໜຶ່ງ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ໄປ ເຂົ້າໃຈມອກວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ບຸຣຸດຜູ້ມີຕາດີເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ທ່ານຜູ້ນີ້ບໍ່ຮູ້ຈັກແກ່ນໄມ້ ມອກ ເປືອກ ເກັດ ງ່າແລະໃບ ແທ້ຈິງ ທ່ານຜູ້ນີ້ຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ໄປ ເຂົ້າໃຈມອກວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ແລະ ກິດທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ"

[໓໑໗] ອີກແນວໜຶ່ງ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ຮູ້ແກ່ນໄມ້ວ່າ "ແກ່ນໄມ້" ຈຶ່ງຕັດນຳໄປ ບຸຣຸດຜູ້ມີຕາດີ ເຫັນເຂົາແລ້ວຈະເພິ່ງກ່າວແນວນີ້ວ່າ "ທ່ານຜູ້ນີ້ຮູ້ຈັກແກ່ນໄມ້ ມອກ ເປືອກ ເກັດ ງ່າແລະໃບ ແທ້ຈິງ ທ່ານຜູ້ນີ້ຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ຮູ້ແກ່ນໄມ້ວ່າ "ແກ່ນໄມ້" ຈຶ່ງຕັດນຳໄປ ແລະກິດທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກສຳເລັດປະໂຫຍດແກ່ເຂົາ" ແມ່ນສັນໃດ

## ງ່າແລະໃບແຫ່ງພົມມະຈັນ

[໓໑໙] ພາມ ບຸກຄົນບາງຄົນໃນໂລກນີ້ ກໍຄືກັນສັນນັ້ນ ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກ ຢູ່ສະເພາະໜ້າແລ້ວ ເຮັດແນວໃດ ການເຮັດທີ່ສຸດແຫ່ງກອງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາມີລາບສັກກາຣະແລະຄວາມສັນເສີນ ສ່ວນພິກຂຸອື່ນນອກນີ້ບໍ່ມີຊື່ສຽງ ມີສັກໜ້ອຍ" ອັນໜຶ່ງ ເຂົາບໍ່ສ້າງສັນທະ ບໍ່ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງ ແລະ ປະນິດກວ່າລາບສັກກາຣະແລະຄວາມສັນເສີນ ທັງເປັນຜູ້ມີຄວາມປະພຶດຫຍ່ອນຍານ ຫຍໍ້ທໍ້ ອຸປະມາເໝືອນບຸຣຸດນັ້ນຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກ ເປືອກແລະເກັດໄປ ເຂົ້າໃຈງ່າແລະໃບວ່າ "ແກ່ນໄມ້" ຈຶ່ງຕັດນຳໄປ ວຽກທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ ສັນໃດ ບຸກຄົນນີ້ຕະຖາຄົດຮຽກວ່າ ມີອຸປະມາສັນນັ້ນ

## ເກັດແຫ່ງພົມມະຈັນ

[໓໑໘] ບຸກຄົນບາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດ ຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດແນວໃດ ການເຮັດທີ່ສຸດແຫ່ງກອງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈແລະມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ເຂົາສ້າງສັນທະ ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງ ແລະ ປະນິດກວ່າລາບສັກກາຣະແລະຄວາມສັນເສີນ ທັງເປັນຜູ້ມີຄວາມປະພຶດບໍ່ຫຍ່ອນຍານ ບໍ່ຫຍໍ້ທໍ້ ເຂົາຍ່ອມທຳຄວາມສົມບູນແຫ່ງສີນໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນຄວາມສົມບູນແຫ່ງສີນນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາມີສີນ ມີກັນລະຍານະທຳ ສ່ວນພິກຂຸອື່ນນອກນີ້ ເປັນຜູ້ທຸສີນ ມີບາບທຳ" ອັນໜຶ່ງ ເຂົາບໍ່ສ້າງສັນທະ ບໍ່ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງແລະປະນິດກວ່າ ຄວາມສົມບູນແຫ່ງສີນ ທັງເປັນຜູ້ມີຄວາມປະພຶດຫຍ່ອນຍານ ຫຍໍ້ທໍ້ ອຸປະມາເໝືອນບຸຣຸດນັ້ນຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ ມອກແລະເປືອກໄປ ເຂົ້າໃຈເກັດ

ວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ແລະກິດທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ ສັນໃດ ບຸກຄົນນີ້ຕະຖາຄົດຮຽກວ່າ ມີອຸປະມາສັນນັ້ນ

## ເປືອກແຫ່ງພົມມະຈັນ

[໓໔໐] ບຸກຄົນບາງຄົນໃນໂລກນີ້ ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໆລໆ ຄອບງຳແລ້ວ ໆລໆ ການເຮັດທີ່ສຸດແຫ່ງກອງທຸກ ທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈ ແລະມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ອັນໜຶ່ງ ເຂົາສ້າງສັນທະ ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງ ແລະປະນິດກວ່າລາບສັກກາຣະແລະຄວາມສັນເສີນ ທັງເປັນຜູ້ມີຄວາມປະພຶດບໍ່ຫຍ່ອນຍານ ບໍ່ຫຍໍ້ທໍ້ ເຂົາຍ່ອມທຳຄວາມສົມບູນແຫ່ງສິນໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສິນນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສິນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ອັນໜຶ່ງ ເຂົາສ້າງສັນທະພະຍາຍາມ ເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນ ອັນຍິ່ງແລະປະນິດກວ່າຄວາມສົມບູນແຫ່ງສິນ ທັງເປັນຜູ້ມີຄວາມປະພຶດບໍ່ຫຍ່ອນຍານ ບໍ່ຫຍໍ້ທໍ້ ເຂົາຍ່ອມທຳຄວາມສົມບູນແຫ່ງສະມາທິໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງຍົກຕົນ ຂົ່ມຜູ້ອື່ນວ່າ "ເຮົາມີຈິດຕັ້ງໝັ້ນ ມີຈິດມີອາລົມແນ່ວແນ່ ສ່ວນພິກຂຸອື່ນນອກນີ້ມີຈິດບໍ່ຕັ້ງໝັ້ນ ມີຈິດແປຜັນ" ເຂົາບໍ່ສ້າງສັນທະ ບໍ່ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງແລະປະນິດກວ່າຄວາມສົມບູນແຫ່ງສະມາທິ ທັງເປັນຜູ້ປະພຶດຫຍ່ອນຍານ ຫຍໍ້ທໍ້ ອຸປະມາເໝືອນບຸຣຸດນັ້ນຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຍືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ແລະມອກໄປ ເຂົ້າໃຈເປືອກວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ວຽກທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ ສັນໃດ ບຸກຄົນນີ້ຕະຖາຄົດຮຽກວ່າ ມີອຸປະມາສັນນັ້ນ

## ມອກແຫ່ງພົມມະຈັນ

[໓໔໑] ບຸກຄົນບາງຄົນໃນໂລກນີ້ ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໆລໆ ຄອບງຳແລ້ວ ໆລໆ ການເຮັດທີ່ສຸດແຫ່ງກອງທຸກທັງໝົດ ນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈ ແລະ ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ອັນໜຶ່ງ ເຂົາສ້າງສັນທະ ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງ ແລະ ປະນິດກວ່າລາບສັກກາຣະ

ແລະຄວາມສັນເສີນ ທັງເປັນຜູ້ມີຄວາມປະພຶດບໍ່ຫຍ່ອນຍານ ບໍ່ຫຍໍ້ທໍ້ ເຂົາຍ່ອມທຳຄວາມສົມບູນແຫ່ງສິນໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສິນນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສິນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ອັນໜຶ່ງ ເຂົາສ້າງສັນທະພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນ ອັນຍິ່ງແລະປະນີດກວ່າຄວາມສົມບູນແຫ່ງສິນ ທັງເປັນຜູ້ມີຄວາມປະພຶດບໍ່ຫຍ່ອນຍານ ບໍ່ຫຍໍ້ທໍ້ ເຂົາຍ່ອມທຳຄວາມສົມບູນແຫ່ງສະມາທິໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ອັນໜຶ່ງ ເຂົາສ້າງສັນທະ ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນ ອັນຍິ່ງແລະປະນີດກວ່າຄວາມສົມບູນແຫ່ງສະມາທິ ທັງເປັນຜູ້ມີຄວາມປະພຶດບໍ່ຫຍ່ອນຍານ ບໍ່ຫຍໍ້ທໍ້ ເຂົາຍ່ອມເຮັດຍານທັດສະນະໃຫ້ສຳເລັດ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງພໍໃຈແລະມີຄວາມຮູ້ສຶກສົມຫວັງ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງຍົກຕົນຂົ່ມຜູ້ອື່ນວ່າ "ເຮົາຮູ້ ເຮົາເຫັນຢູ່ ສ່ວນພິກຂຸອື່ນນອກນີ້ບໍ່ຮູ້ ບໍ່ເຫັນຢູ່" ອັນໜຶ່ງ ເຂົາບໍ່ສ້າງສັນທະ ບໍ່ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງ ແລະ ປະນີດກວ່າຍານທັດສະນະ ທັງເປັນຜູ້ມີຄວາມປະພຶດຫຍ່ອນຍານ ຫຍໍ້ທໍ້ ອຸປະມາເໝືອນບຸຣຸດນັ້ນ ຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່ ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ກັບແນມຂ້າມແກ່ນໄມ້ໄປ ເຂົ້າໃຈນອກວ່າ "ແກ່ນໄມ້" ຈຶ່ງຖາກນຳໄປ ແລະ ກິດທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກບໍ່ສຳເລັດປະໂຫຍດແກ່ເຂົາ ສັນໃດ ບຸກຄົນນີ້ຕະຖາຄົດຮຽກວ່າ ມີອຸປະມາສັນນັ້ນ

## ແກ່ນແຫ່ງພົມມະຈັນ

[໓໔໔] ບຸກຄົນລາງພວກໃນໂລກນີ້ ມີສັດທາອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ຄອບງຳແລ້ວ ຖືກຄວາມທຸກຄອບງຳ ມີຄວາມທຸກຢູ່ສະເພາະໜ້າແລ້ວ ເຮັດແນວໃດ ການເຮັດທີ່ສຸດແຫ່ງກອງທຸກທັງໝົດນີ້ຈະເພິ່ງມີໄດ້" ເຂົາບວດແລ້ວແນວນັ້ນ ເຮັດລາບສັກກາຣະແລະຄວາມສັນເສີນໃຫ້ເກີດຂຶ້ນ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ພໍໃຈ ແລະມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນລາບສັກກາຣະແລະຄວາມສັນເສີນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ອັນໜຶ່ງ ເຂົາສ້າງສັນທະ ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນ ອັນຍິ່ງແລະປະນີດກວ່າລາບສັກກາຣະແລະຄວາມສັນເສີນ ທັງເປັນຜູ້ມີຄວາມປະພຶດບໍ່ຫຍ່ອນຍານ ບໍ່ຫຍໍ້ທໍ້ ເຂົາຍ່ອມທຳຄວາມສົມບູນແຫ່ງສິນໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສິນນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຄວາມສົມບູນແຫ່ງສິນນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ອັນໜຶ່ງ ເຂົາສ້າງສັນທະ ພະຍາຍາມເພື່ອ ເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງ ແລະ ປະນີດກວ່າຄວາມສົມບູນແຫ່ງສິນ ທັງເປັນຜູ້ມີຄວາມ ປະພຶດບໍ່ຫຍ່ອນຍານ ບໍ່ຫຍໍ້ທໍ້ ເຂົາຍ່ອມທຳຄວາມສົມບູນແຫ່ງສະມາທິໃຫ້ສຳເລັດ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມ

ຫວັງ ຍ້ອນຄວາມສົມບູນແຫ່ງສະມາທິນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ອັນໜຶ່ງ ເຂົາສ້າງສັນທະພະຍາຍາມ ເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງ ແລະ ປະນີດກວ່າຄວາມສົມບູນແຫ່ງສະມາທິແລະເປັນຜູ້ມີຄວາມປະພຶດບໍ່ຫຍ່ອນຍານ ບໍ່ທໍ້ຖອຍ ເຂົາຍ່ອມເຮັດຍານທັດສະນະໃຫ້ສຳເລັດ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງພໍໃຈ ແຕ່ມີຄວາມຮູ້ສຶກຍັງບໍ່ສົມຫວັງ ຍ້ອນຍານທັດສະນະນັ້ນ ເຂົາຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ອັນໜຶ່ງ ເຂົາສ້າງສັນທະ ພະຍາຍາມເພື່ອເຮັດໃຫ້ແຈ້ງທຳເຫຼົ່າອື່ນອັນຍິ່ງແລະປະນີດກວ່າຍານທັດສະນະ ທັງເປັນຜູ້ມີຄວາມປະພຶດບໍ່ຫຍ່ອນຍານ ບໍ່ທໍ້ຖອຍ

[໓໘໓] ທຳອັນຍິ່ງ ແລະ ປະນີດກວ່າຍານທັດສະນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ແມ່ນທຳຂໍ້ນີ້ກໍຍິ່ງ ແລະ ປະນີດກວ່າຍານທັດສະນະ

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ຢູ່ແມ່ນທຳ ຂໍ້ນີ້ກໍຍິ່ງ ແລະ ປະນີດກວ່າຍານທັດສະນະ

ອີກປະການໜຶ່ງ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ພິກຂຸບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ “ອາກາດຫາບ່ອນສຸດບໍ່ໄດ້” ແມ່ນທຳຂໍ້ນີ້ກໍຍິ່ງ ແລະ ປະນີດກວ່າຍານທັດສະນະ

ອີກປະການໜຶ່ງ ຍ້ອນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ “ວິນຍານຫາທີ່ສຸດບໍ່ໄດ້” ຯລຯ ຍ້ອນລ່ວງ ວິນຍານັນຈາຍະຕະນະຊານໄດ້ໂດຍປະການທັງປວງ ພິກຂຸບັນລຸອາກິນຈັນຍາຍະຕະນະຊານຢູ່ໂດຍກຳນົດວ່າ “ບໍ່ມີອັນໃດ” ຯລຯ ຍ້ອນລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ແມ່ນທຳຂໍ້ນີ້ກໍຍິ່ງແລະປະນີດກວ່າຍານທັດສະນະ

ອີກປະການໜຶ່ງ ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸສັນຍາເວທະຍິຕະນິໂຣດຢູ່ ຍ້ອນເຫັນດ້ວຍປັນຍາ ອາສະວະທັງຫຼາຍຂອງທ່ານຍ່ອມສິ້ນໄປ ແມ່ນທຳຂໍ້ນີ້ກໍຍິ່ງແລະປະນີດກວ່າຍານທັດສະນະ

ເຫຼົ່ານີ້ ເປັນທຳອັນຍິ່ງ ແລະ ປະນີດກວ່າຍານທັດສະນະ

[໓໘໔] ອຸປະມາເໝືອນບຸຣຸດນັ້ນ ຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ຢູ່

ເມື່ອມີຕົ້ນໄມ້ໃຫຍ່ເຊິ່ງມີແກ່ນຢືນຕົ້ນຢູ່ ຮູ້ແກ່ນໄມ້ວ່າ "ແກ່ນໄມ້" ຈຶ່ງຕັດນຳໄປ ວຽກທີ່ເຂົາຈະຕ້ອງໃຊ້ແກ່ນໄມ້ເຮັດຈັກສຳເລັດປະໂຫຍດແກ່ເຂົາ ສັນໃດ ບຸກຄົນນີ້ຕະຖາຄົດຮຽກວ່າ ມີອຸປະມາສັນນັ້ນ

ພາມ ດັ່ງພັນນາມາແນວນີ້ ພົມມະຈັນນີ້ຈຶ່ງບໍ່ແມ່ນມີລາບສັກການະ ແລະ ຄວາມສັນເສີນເປັນອານິສົງ ບໍ່ແມ່ນມີຄວາມສົມບູນແຫ່ງສິນເປັນອານິສົງ ບໍ່ແມ່ນມີຄວາມສົມບູນແຫ່ງສະມາທິເປັນອານິສົງ ບໍ່ແມ່ນມີຍານທັດສະນະເປັນອານິສົງ ພົມມະຈັນນີ້ມີເຈໂຕວິມຸດຕິອັນບໍ່ກຳເຣີບເປັນເປົ້າໝາຍ ເປັນແກ່ນ ເປັນທີ່ສຸດ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ປິງຄະລະໂກດສະພາມໄດ້ຂາບທູນພຣະຜູ້ມີພຣະພາກແນວນີ້ວ່າ "ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ຈູລະສາໂຣປະມະສູດທີ ໑໐ ຈົບ**

**ໂອປຳມະວັກ ທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ກະກະຈູປະມະສູດ | ໒. ອະນະຄັດທູປະມະສູດ |
| ໓. ວຳມິກະສູດ | ໔. ຣະຖະວິນີຕະສູດ |
| ໕. ນິວາປະສູດ | ໖. ປາສະຣາສີສູດ |
| ໗. ຈູລະຫັດຖິປະໂທປະມະສູດ | ໘. ມະຫາຫັດຖິປະໂທປະມະສູດ |
| ໙. ມະຫາສາໂຣປະມະສູດ | ໑໐. ຈູລະສາໂຣປະມະສູດ |

# ໔. ມະຫາຍະມະກະວັກ

## ໝວດວ່າດ້ວຍທຳເປັນຄູ່ ໝວດໃຫຍ່

## ໑. ຈູລະໂຄສິງຄະສູດ

### ວ່າດ້ວຍເຫດການໃນໂຄສິງຄະສາລະວັນ ສູດນ້ອຍ

[໓໔໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຕຳໜັກດິນຈີ່ໃນເຮືອນຊື່ນາທິກະ ສະໄໝນັ້ນ ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມິລະ ຢູ່ທີ່ປ່າໂຄສິງຄະສາລະວັນ ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກທີ່ຫຼີກລີ້ ເຂົ້າໄປສູ່ປ່າໂຄສິງຄະສາລະວັນ

ນາຍທາຍບານ (ຜູ້ຖືຮັກສາປ່າ) ໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດມາແຕ່ໄກ ແລ້ວໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະສະມະນະ ທ່ານຢ່າເຂົ້າໄປໃນປ່ານີ້ເລີຍ ໃນປ່ານີ້ມີກຸນລະບຸດ (ພຣະເຖຣະ) ໓ ທ່ານ ເຊິ່ງເປັນຜູ້ມຸ້ງປະໂຫຍດຕົນຢູ່ ທ່ານຢ່າໄດ້ລົບກວນກຸນລະບຸດທັງ ໓ ນັ້ນເລີຍ"

ເມື່ອນາຍທາຍບານຂາບທູນພຣະຜູ້ມີພຣະພາກເຈົ້າຢູ່ນັ້ນ ທ່ານພຣະອະນຸຣຸດທະໄດ້ຍິນແລ້ວຈຶ່ງໄດ້ບອກກັບນາຍທາຍບານວ່າ "ນາຍທາຍບານ ທ່ານຢ່າໄດ້ຫ້າມພຣະຜູ້ມີພຣະພາກເຈົ້າເລີຍ ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສາດສະດາຂອງພວກເຮົາສະເດັດມາຮອດແລ້ວ"

ຄັ້ງນັ້ນ ທ່ານພຣະອະນຸຣຸດທະໄດ້ເຂົ້າໄປຫາທ່ານພຣະນັນທິຍະ ແລະ ທ່ານພຣະກິມິລະເຖິງທີ່ຢູ່ ແລ້ວໄດ້ບອກວ່າ "ຟ້າວໄປກັນເທີ້ນທ່ານ ຟ້າວໄປກັນເທີ້ນທ່ານ ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສາດສະດາຂອງພວກເຮົາສະເດັດມາເຖິງແລ້ວ"

ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມິລະໄດ້ຕ້ອນຮັບພຣະຜູ້ມີພຣະພາກເຈົ້າ ອົງໜຶ່ງ ຮັບບາດແລະຈີວອນຂອງພຣະຜູ້ມີພຣະພາກເຈົ້າ ອົງໜຶ່ງປູອາສະນະ ອົງໜຶ່ງຕັ້ງນ້ຳລ້າງພຣະບາດ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງ ພຸດທະອາດທີ່ປູລາດໄວ້ ເມື່ອລ້າງພຣະບາດແລ້ວ ທ່ານທັງ ໓ ອົງນັ້ນ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດກັບທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ

ແລະທ່ານພຣະກິມິລະ ວ່າ

[໓໒໙] "ອະນຸຣຸດທະ ນັນທິຍະ ແລະ ກິມິລະ ທ່ານທັງຫຼາຍຍັງສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ? ບໍ່ລຳບາກດ້ວຍບິນທະບາດບໍ?"

ທ່ານພຣະອະນຸຣຸດທະຂາບທູນວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທັງຫຼາຍຍັງສະບາຍດີ ຍັງພໍເປັນຢູ່ໄດ້ ບໍ່ລຳບາກດ້ວຍບິນທະບາດ"

"ທ່ານທັງຫຼາຍ ຍັງພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນເໝືອນນ້ຳນົມກັບນ້ຳເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ບໍ?"

"ຂໍປະທານວະໂຣກາດ ຂ້າພຣະອົງທັງຫຼາຍຍັງພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນເປັນເໝືອນນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ ໂດຍຂ້ານ້ອຍ"

"ທ່ານທັງຫຼາຍ ເປັນຜູ້ພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນເໝືອນນ້ຳນົມກັບນ້ຳເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ໄດ້ແນວໃດ?"

"ຂໍປະທານວະໂຣກາດ ຂ້າພຣະອົງມີຄວາມຄິດແນວນີ້ວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ໄດ້ຢູ່ກັບເພື່ອນພົມມະຈາຣີແນວນີ້" ຂ້າພຣະອົງຕັ້ງໝັ້ນເມດຕາກາຍຍະກຳ ຕັ້ງໝັ້ນເມດຕາວະຈີກຳ ແລະ ຕັ້ງໝັ້ນເມດຕາມະໂນກຳ໌ໃນທ່ານເຫຼົ່ານີ້ ທັງຕໍ່ໜ້າແລະລັບຫຼັງ ຂ້າພຣະອົງມີຄວາມຄິດແນວນີ້ວ່າ "ທາງທີ່ດີ ເຮົາຄວນເກັບຄວາມຄິດເຫັນຂອງຕົນແລ້ວປະພຶດຕາມອຳນາດຄວາມຄິດເຫັນຂອງທ່ານຜູ້ນີ້" ຂ້າພຣະອົງກໍເກັບຄວາມຄິດເຫັນຂອງຕົນແລ້ວປະພຶດຕາມອຳນາດຄວາມຄິດເຫັນຂອງທ່ານຜູ້ນີ້ ກາຍຂອງຂ້າພຣະອົງທັງຫຼາຍຕ່າງກັນກໍຈິງ ແຕ່ຄວາມຄິດເຫັນເປັນອັນດຽວກັນ ຂ້ານ້ອຍ"

ແມ່ນທ່ານພຣະນັນທິຍະ ຯລຯ ແມ່ນທ່ານພຣະກິມິລະກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ແມ່ນຂ້າພຣະອົງກໍມີຄວາມຄິດແນວນີ້ວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ໄດ້ຢູ່ກັບເພື່ອນພົມມະຈາຣີແນວນີ້"

ຂ້າພຣະອົງຕັ້ງໝັ້ນເມດຕາກາຍຍະກຳ ຕັ້ງໝັ້ນເມດຕາວະຈີກຳ ແລະ ຕັ້ງໝັ້ນເມດຕາມະໂນກຳ ໃນທ່ານເຫຼົ່ານີ້ ທັງຕໍ່ໜ້າແລະລັບຫຼັງ ຂ້າພຣະອົງມີຄວາມຄິດແນວນີ້ວ່າ "ທາງທີ່ດີ ເຮົາຄວນເກັບຄວາມຄິດເຫັນຂອງຕົນ ແລ້ວປະພຶດຕາມອຳນາດຄວາມຄິດເຫັນຂອງທ່ານຜູ້ນີ້" ຂ້າພຣະອົງ ກໍເກັບຄວາມຄິດເຫັນຂອງຕົນ ແລ້ວປະພຶດຕາມອຳນາດຄວາມຄິດເຫັນຂອງທ່ານເຫຼົ່ານີ້ກາຍຂອງຂ້າພຣະອົງທັງຫຼາຍຕ່າງກັນກໍຈິງ ແຕ່ຄວາມຄິດເຫັນເປັນອັນດຽວກັນ

ຂ້າພຣະອົງທັງຫຼາຍ ຍັງພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ຍັງເປັນເໝືອນນ້ຳນົມກັບນ້ຳ ແນມກັນແລະກັນດ້ວຍສາຍຕາທີ່ປຽມດ້ວຍຄວາມຮັກຢູ່ຢ່າງນີ້ແລ ຂ້ານ້ອຍ"

[໓໔໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະກິມິລະ ທ່ານທັງຫຼາຍເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແມ່ນບໍ?"

ທ່ານພຣະອະນຸຣຸດທະຂາບທູນວ່າ "ຂໍປະທານອະໄຣກາດ ຂ້າພຣະອົງທັງຫຼາຍ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ໂດຍຂ້ານ້ອຍ"

"ທ່ານທັງຫຼາຍ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ໄດ້ແນວໃດ?"

"ຂໍປະທານອະໄຣກາດ ບັນດາຂ້າພຣະອົງທັງຫຼາຍ ອົງໃດກັບຈາກບິນທະບາດຈາກໝູ່ບ້ານກ່ອນ ອົງນັ້ນກໍປູລາດອາສະນະ ຕັ້ງນ້ຳສັນນ້ຳໃຊ້ໄວ້ ຕັ້ງຖາດສຳຮັບໄວ້ ອົງໃດກັບຈາກບິນທະບາດຈາກໝູ່ບ້ານພາຍຫຼັງ ຖ້າມີບິນທະບາດທີ່ເຫຼືອຈາກສັນ ຫາກປະສົງກໍສັນ ຫາກບໍ່ປະສົງກໍຖອກຖິ້ມເທິງພື້ນທີ່ປາສະຈາກຂອງຂຽວ ຫຼື ຖອກລົງໃນນ້ຳທີ່ບໍ່ມີຕົວສັດ ອົງນັ້ນເກັບມ້ຽນອາສະນະ ເກັບມ້ຽນນ້ຳສັນນ້ຳໃຊ້ ເກັບມ້ຽນຖາດສຳຮັບ ກວາດໂຮງອາຫານ ອົງໃດເຫັນ ໝໍ້ນ້ຳສັນ ໝໍ້ນ້ຳໃຊ້ ຫຼື ໝໍ້ນ້ຳຊຳຣະວ່າງເປົ່າ ອົງນັ້ນກໍນຳໄປຕັ້ງໄວ້ ຖ້າເຫຼືອວິໄສຂອງທ່ານ ກໍກວັກມືຮຽກອົງທີ ໒ ມາຊ່ອຍກັນຍົກນຳໄປຕັ້ງໄວ້ ຂ້າພຣະອົງທັງຫຼາຍ ບໍ່ເປ່ງວາຈາຍ້ອນຂໍ້ນັ້ນເປັນປັດໄຈ ແລະທຸກ ໕ ມື້ ຂ້າພຣະອົງທັງຫຼາຍ ນັ່ງສົນທະນາທຳມີກະຖາມົດຄືນຊອດແຈ້ງ ຂ້າພຣະອົງທັງຫຼາຍ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ແລ ຂ້ານ້ອຍ"

## ທຳເຄື່ອງຢູ່ຢ່າງຜາສຸກ

[໓໔໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະກິມິລະ ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກທີ່ທ່ານທັງຫຼາຍຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ ໄດ້ບັນລຸແລ້ວ ມີຢູ່ແດ່ບໍ?"

ທ່ານພຣະອະນຸຣຸດທະຂາບທູນວ່າ "ຈະບໍ່ມີໄດ້ແນວໃດ ຂ້າພຣະອົງທັງຫຼາຍສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ຕາມກຳນົດເວລາທີ່ມຸ້ງຫວັງ ນີ້ຄື ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກ ຂ້າພຣະອົງທັງຫຼາຍ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ໄດ້ບັນລຸແລ້ວ ຂ້ານ້ອຍ"

"ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະ ກິມິລະ ຍານທັດສະນະທີ່ປະເສີດອັນ

ສາມາດ ວິເສດຍິ່ງກວ່າທຳຂອງມະນຸດເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນທີ່ທ່ານທັງຫຼາຍໄດ້ບັນລຸເພື່ອກ້າວລ່ວງ ແລະ ເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ມີຢູ່ບໍ?"

"ຈະບໍ່ມີໄດ້ແນວໃດ ຂ້ານ້ອຍ ຍ້ອນວິຕົກວິຈານສະງົບລະງັບໄປ ຂ້າພຣະອົງ ທັງຫຼາຍ ບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີ ວິຕົກ ບໍ່ມີ ວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່ຕາມກຳນົດເວລາທີ່ມຸ້ງຫວັງ ນີ້ຄື ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນ ທີ່ຂ້າພຣະອົງທັງຫຼາຍ ໄດ້ບັນລຸເພື່ອກ້າວລ່ວງແລະເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ"

"ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະ ກິມິລະ ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນທີ່ທ່ານທັງຫຼາຍໄດ້ບັນລຸ ເພື່ອກ້າວລ່ວງ ແລະ ເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ມີຢູ່ແດ່ບໍ?"

"ຈະບໍ່ມີໄດ້ແນວໃດ ຂ້ານ້ອຍ ຍ້ອນປີຕິຈາງຄາຍອອກ ຂ້າພຣະອົງທັງຫຼາຍ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ນີ້ຄືຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກ ຢ່າງອື່ນທີ່ຂ້າພຣະອົງທັງຫຼາຍໄດ້ບັນລຸເພື່ອກ້າວລ່ວງແລະເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ຂ້ານ້ອຍ"

"ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະ ກິມິລະ ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນທີ່ທ່ານທັງຫຼາຍໄດ້ບັນລຸ ເພື່ອກ້າວລ່ວງ ແລະເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ມີຢູ່ແດ່ບໍ?"

"ຈະບໍ່ມີໄດ້ແນວໃດ ຂ້ານ້ອຍ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ຂ້າພຣະອົງທັງຫຼາຍ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ຕາມກຳນົດເວລາທີ່ມຸ້ງຫວັງ ນີ້ຄື ຍານທັດສະນະທີ່ປະເສີດ ອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນທີ ຂ້າພຣະອົງທັງຫຼາຍ ໄດ້ບັນລຸເພື່ອກ້າວລ່ວງ ແລະ ເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ຂ້ານ້ອຍ"

"ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະ ກິມິລະ ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນທີ່ທ່ານທັງຫຼາຍໄດ້ບັນລຸ ເພື່ອກ້າວລ່ວງແລະເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ມີຢູ່ແດ່ບໍ?"

"ຈະບໍ່ມີໄດ້ແນວໃດ ຂ້ານ້ອຍ ຍ້ອນລ່ວງອົງສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດ

ຕະສັນຍາໂດຍປະການທັງປວງ ຂ້າພຣະອົງທັງຫຼາຍບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຕາມກຳນົດເວລາທີ່ມຸ້ງຫວັງນີ້ຄືຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດເຊິ່ງເປັນເຄື່ອງຢູ່ຢ່າງ ຜາສຸກຢ່າງອື່ນທີ່ຂ້າພຣະອົງທັງຫຼາຍ ໄດ້ບັນລຸເພື່ອກ້າວລ່ວງ ແລະ ເພື່ອລະງັບທຳເປັນເຄື່ອງຢູ່ແນວໜຶ່ງ ຂ້ານ້ອຍ"

"ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະ ກິມິລະ ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນທີ່ທ່ານທັງຫຼາຍໄດ້ບັນລຸເພື່ອກ້າວລ່ວງ ແລະ ເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ມີຢູ່ແດ່ບໍ?"

"ຈະບໍ່ມີໄດ້ແນວໃດ ຂ້ານ້ອຍ ຍ້ອນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ຂ້າພຣະອົງທັງຫຼາຍ ບັນລຸວິນຍານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຕາມກຳນົດເວລາທີ່ມຸ້ງຫວັງ ຯລຯ ຍ້ອນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ຂ້າພຣະອົງທັງຫຼາຍ ບັນລຸອາກິນຈັນຍາຍະຕະນະຊານຢູ່ໂດຍ ກຳນົດວ່າ "ບໍ່ມີອັນໃດ" ຕາມກຳນົດເວລາທີ່ມຸ້ງຫວັງ ຯລຯ ຍ້ອນລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ຂ້າພຣະອົງທັງຫຼາຍ ບັນລຸເນວະສັນຍານາສັນຍາຍະຕະນະຊານ ຢູ່ຕາມກຳນົດເວລາທີ່ມຸ້ງຫວັງນີ້ຄືຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນທີ່ຂ້າພຣະອົງທັງຫຼາຍໄດ້ບັນລຸ ເພື່ອກ້າວລ່ວງ ແລະເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ຂ້ານ້ອຍ"

[໓໔໙] "ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະກິມິລະ ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນທີ່ທ່ານທັງຫຼາຍໄດ້ບັນລຸເພື່ອກ້າວລ່ວງ ແລະ ເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ມີຢູ່ແດ່ບໍ?"

"ຈະບໍ່ມີໄດ້ແນວໃດ ຂ້ານ້ອຍ ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ຂ້າພຣະອົງທັງຫຼາຍ ບັນລຸສັນຍາເວທະຍິຕະນິໂຣດຢູ່ ຍ້ອນເຫັນດ້ວຍປັນຍາ ອາສະວະຂອງຂ້າພຣະອົງທັງຫຼາຍ ຍ່ອມສິ້ນໄປຕາມກຳນົດເວລາທີ່ມຸ້ງຫວັງ ນີ້ຄື ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ເຊິ່ງເປັນເຄື່ອງຢູ່ຢ່າງຜາສຸກແນວອື່ນທີ່ຂ້າພຣະອົງທັງຫຼາຍໄດ້ບັນລຸເພື່ອກ້າວລ່ວງແລະເພື່ອລະງັບທຳເປັນເຄື່ອງຢູ່ນັ້ນ ຂ້ານ້ອຍ ອັນໜຶ່ງ ຂ້າພຣະອົງທັງຫຼາຍ ຍັງບໍ່ພິຈາລະນາເຫັນທຳເປັນເຄື່ອງຢູ່ຢ່າງຜາສຸກແນວອື່ນ ທີ່ຍິ່ງ ຫຼື ປະນີດກວ່າທຳເປັນເຄື່ອງຢູ່ຢ່າງຜາສຸກນີ້ ຂ້ານ້ອຍ"

"ດີແລ້ວ ດີແລ້ວ ອະນຸຣຸດທະ ນັນທິຍະ ແລະ ກິມິລະ ທຳເປັນເຄື່ອງຢູ່ຢ່າງຜາສຸກຢ່າງອື່ນ ທີ່ຍິ່ງ ຫຼື ປະນີດກວ່າທຳເປັນເຄື່ອງຢູ່ຢ່າງຜາສຸກນີ້ບໍ່ມີອີກແລ້ວ"

[໓໓໐] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມິລະເຫັນແຈ້ງ ຊວນໃຈໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ຮ່ອຍຮໍາໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ແລ້ວຊົງລຸກຈາກອາສະນະສະເດັດຈາກໄປ

ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມິລະຕາມສົ່ງສະເດັດພຣະຜູ້ມີພຣະພາກ ເມື່ອກັບຈາກບ່ອນນັ້ນແລ້ວ ທ່ານພຣະນັນທິຍະ ແລະ ທ່ານພຣະກິມິລະໄດ້ກ່າວກັບທ່ານພຣະອະນຸຣຸດທະວ່າ "ທ່ານອະນຸຣຸດທະປະກາດຄຸນວິເສດໃດຂອງພວກຂ້າພະເຈົ້າ ຈົນເຖິງຄວາມສິ້ນອາສະວະ ໃນບ່ອນສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ພວກຂ້າພະເຈົ້າໄດ້ບອກຄຸນວິເສດນັ້ນ ແກ່ທ່ານອະນຸຣຸດທະຢ່າງນັ້ນແລ້ວບໍວ່າ "ພວກເຮົາໄດ້ວິຫານສະມາບັດເຫຼົ່ານີ້ແລະເຫຼົ່ານີ້ແລ້ວ"

ທ່ານພຣະອະນຸຣຸດທະກ່າວວ່າ "ພວກທ່ານບໍ່ໄດ້ບອກແກ່ຂ້າພະເຈົ້າແນວນີ້ວ່າ "ພວກທ່ານໄດ້ ວິຫານສະມາບັດເຫຼົ່ານີ້ແລະເຫຼົ່ານີ້ແລ້ວ" ແຕ່ຂ້າພະເຈົ້າກຳນົດຈິດຂອງພວກທ່ານດ້ວຍຈິດຂອງຂ້າພະເຈົ້າແລ້ວຮູ້ໄດ້ວ່າ "ທ່ານເຫຼົ່ານີ້ ໄດ້ວິຫານສະມາບັດເຫຼົ່ານີ້ແລະເຫຼົ່ານີ້ແລ້ວ" ແມ່ນພວກເທວະດາກໍໄດ້ບອກເນື້ອຄວາມຂໍ້ນີ້ແກ່ຂ້າພະເຈົ້າວ່າ "ທ່ານເຫຼົ່ານີ້ໄດ້ວິຫານສະມາບັດເຫຼົ່ານີ້ແລະເຫຼົ່ານີ້" ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມບັນຫາ ຂ້າພະເຈົ້າຈຶ່ງກ້າທູນຕອບເນື້ອຄວາມນັ້ນແກ່ພຣະອົງ"

## ເທວະດາສັນເສີນພຣະເຖຣະທັງ ໓ ອົງ

[໓໓໑] ຍັກຊື່ທີຄະປະນະຊະນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວໄດ້ຢືນຢູ່ໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ເປັນລາບຂອງຊາວວັດຊີ ປະຊາຊົນຊາວວັດຊີໄດ້ດີແລ້ວ ທີ່ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ສະເດັດມາປະທັບຢູ່ ແລະ ກຸນລະບຸດ ໓ ທ່ານນີ້ ຄື ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມິລະກໍມາພັກຢູ່ນໍາ"

ເທບຊັ້ນພຸມໄດ້ຟັງສຽງຂອງຍັກຊື່ ທີຄະປະຣະຊະນະແລ້ວໄດ້ປະກາດຕໍ່ໄປວ່າ "ທ່ານຜູ້ຈະເລີນທັງຫຼາຍ ເປັນລາບຂອງຊາວວັດຊີ ປະຊາຊົນຊາວວັດຊີໄດ້ດີແລ້ວ ທີ່ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ສະເດັດມາປະທັບຢູ່ ແລະ ກຸນລະບຸດ ໓ ທ່ານນີ້ ຄື ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມິລະກໍມາພັກຢູ່"

ເທບຊັ້ນຈາຕຸມະຫາຣາດໄດ້ຟັງສຽງຂອງເທບຊັ້ນພຸມມະແລ້ວ ໗ລ໗ ເທບຊັ້ນຕາວະຕິງ

ສາ ໆລໆ ເທບຊັ້ນຍາມາ ໆລໆ ເທບຊັ້ນດຸສິດ ໆລໆ ເທບຊັ້ນນິມມານະຣະດີ ໆລໆ ເທບຊັ້ນປະຣະນິມມິດະວະສະວັດດີ ໆລໆ ເທບທີ່ນັບເຂົ້າໃນໝູ່ພົມໄດ້ຟັງສຽງຂອງເທບຊັ້ນປະຣະນິມມິດະວະສະວັດດີແລ້ວ ໄດ້ປະກາດ (ຕໍ່ໄປ) ວ່າ "ທ່ານຜູ້ຈະເລີນທັງຫຼາຍ ເປັນລາບຂອງຊາວວັດຊີ ປະຊາຊົນຊາວວັດຊີໄດ້ດີແລ້ວ ທີ່ພຣະຕະຖາຄົດອະຣະຫັນຕະສໍາມາສໍາພຸດທະເຈົ້າສະເດັດມາປະທັບຢູ່ ແລະ ກຸນລະບຸດ ໓ ທ່ານນີ້ ຄື ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະ ທ່ານພຣະກິມິລະກໍາມາພັກຢູ່"

ໂດຍຂະນະພຽງບຶດໜຶ່ງນັ້ນ ທ່ານ (ພຣະເຖຣະ) ເຫຼົ່ານັ້ນໄດ້ເປັນຜູ້ທີ່ເທບທັງຫຼາຍຮູ້ຈັກກັນຈົນເຖິງພົມມະໂລກດ້ວຍປະການດັ່ງນີ້

## ການປະຕິບັດດີຂອງພຣະສົງເປັນປະໂຫຍດແກ່ມະຫາຊົນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ "ທີຄະ ຂໍ້ນີ້ເປັນແນວນັ້ນ ທີຄະ ຂໍ້ນີ້ເປັນແນວນັ້ນ ກຸນລະບຸດທັງ ໓ ນີ້ອອກຈາກເຮືອນບວດເປັນບັນພະຊິດຈາກຕະກູນໃດ ຖ້າຕະກູນນັ້ນມີຈິດເຫຼື້ອມໃສຣະນຶກເຖິງກຸນລະບຸດທັງ ໓ ນີ້ ຂໍ້ນັ້ນ ຈະເພິ່ງເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກແກ່ຕະກູນນັ້ນ ຕະຫຼອດການລະນານ

ກຸນລະບຸດທັງ ໓ ນີ້ ອອກຈາກເຮືອນບວດເປັນບັນພະຊິດຈາກວົງຕະກູນໃດ ຖ້າວົງຕະກູນນັ້ນ ເຫຼື້ອມໃສຣະນຶກເຖິງກຸນລະບຸດທັງ ໓ ນີ້ ຂໍ້ນັ້ນ ຈະເພິ່ງເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກແກ່ວົງຕະກູນນັ້ນ ຕະຫຼອດການລະນານ

ກຸນລະບຸດທັງ ໓ ນີ້ ອອກຈາກເຮືອນບວດເປັນບັນພະຊິດຈາກໝູ່ບ້ານໃດ ຖ້າໝູ່ບ້ານນັ້ນມີຈິດເຫຼື້ອມໃສຣະນຶກເຖິງກຸນລະບຸດທັງ ໓ ນີ້ ຂໍ້ນັ້ນ ຈະເພິ່ງເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກແກ່ໝູ່ບ້ານນັ້ນ ຕະຫຼອດການລະນານ

ກຸນລະບຸດທັງ ໓ ນີ້ ອອກຈາກເຮືອນບວດເປັນບັນພະຊິດຈາກນິຄົມໃດ ຖ້ານິຄົມນັ້ນມີຈິດເຫຼື້ອມໃສຣະນຶກເຖິງກຸນລະບຸດທັງ ໓ ນີ້ ຂໍ້ນັ້ນ ຈະເພິ່ງເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກແກ່ນິຄົມນັ້ນ ຕະຫຼອດການລະນານ

ກຸນລະບຸດທັງ ໓ ນີ້ ອອກຈາກເຮືອນບວດເປັນບັນພະຊິດຈາກນະຄອນໃດ ຖ້ານະຄອນນັ້ນມີຈິດເຫຼື້ອມໃສຣະນຶກເຖິງກຸນລະບຸດທັງ ໓ ນີ້ ຂໍ້ນັ້ນ ຈະເພິ່ງເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກແກ່ນຄອນນັ້ນ ຕະຫຼອດການລະນານ

ກຸນລະບຸດທັງ ໓ ນີ້ ອອກຈາກເຮືອນບວດເປັນບັນພະຊິດຈາກຊົນນະບົດໃດ ຖ້າຊົນນະບົດນັ້ນ ມີຈິດເຫຼື້ອມໃສຣະນຶກເຖິງກຸນລະບຸດທັງ ໓ ນີ້ ຂໍ້ນັ້ນ ຈະເພິ່ງເປັນໄປເພື່ອປະໂຫຍດ

ເພື່ອຄວາມສຸກແກ່ຊົນນະບົດນັ້ນ ຕະຫຼອດການລະນານ

ຖ້າ ກະສັດ ທັງມວນມີຈິດເຫຼື້ອມໃສຣະນຶກເຖິງກຸນລະບຸດທັງ ໓ ນີ້ ຂໍ້ນັ້ນ ຈະເພິ່ງເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກແກ່ກະສັດທັງມວນຕະຫຼອດການລະນານ

ຖ້າ ພາມ ທັງມວນ ຯລຯ

ຖ້າ ແພດ ທັງມວນ ຯລຯ

ຖ້າ ສູດ ທັງມວນມີຈິດເຫຼື້ອມໃສຣະນຶກເຖິງກຸນລະບຸດທັງ ໓ ນີ້ ຂໍ້ນັ້ນ ຈະເພິ່ງເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກແກ່ສູດທັງມວນຕະຫຼອດການລະນານ

ຖ້າ ມະນຸດສາໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ ມີຈິດເຫຼື້ອມໃສຣະນຶກເຖິງກຸນລະບຸດທັງ ໓ ນີ້ ຂໍ້ນັ້ນຈະເພິ່ງ ເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກແກ່ມະນຸດສາໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດຕະຫຼອດການລະນານ

ທີຄະ ທ່ານຈົ່ງເຫັນເທີ້ນ ກຸນລະບຸດທັງ ໓ ນີ້ ປະຕິບັດກໍພຽງເພື່ອປະໂຫຍດເກື້ອກູນແກ່ຄົນໝູ່ຫຼາຍ ເພື່ອຄວາມສຸກແກ່ຄົນໝູ່ຫຼາຍ ເພື່ອອະນຸເຄາະແກ່ຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອຄວາມສຸກແກ່ເທວະດາ ແລະ ມະນຸດທັງຫຼາຍ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ຍັກຊື່ ທີຄະປະນະຊະນະ ມີໃຈຍິນດີຊົມຊື່ນພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະໂຄສິງຄະສູດທີ ໑ ຈົບ**

# ໘. ມະຫາໂຄສິງຄະສູດ

## ວ່າດ້ວຍເຫດການໃນໂຄສິງຄະສາລະວັນ ສູດໃຫຍ່

## ປ່າງາມດ້ວຍພິກຂຸມີຄຸນສົມບັດແນວໃດ

[໓໓໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ປ່າໂຄສິງຄະສາລະວັນ ພ້ອມດ້ວຍພຣະເຖຣະຜູ້ເປັນພຣະສາວົກທີ່ມີຊື່ສຽງຫຼາຍອົງ ຄື ທ່ານພຣະສາຣີບຸດ ທ່ານພຣະມະຫາໂມກຄັນລານະ ທ່ານພຣະມະຫາກັດສະປະ ທ່ານພຣະອະນຸຣຸດທະ ທ່ານພຣະເຣວະຕະ ທ່ານພຣະອານົນ ແລະ ພຣະເຖຣະຜູ້ເປັນພຣະສາວົກທີ່ມີຊື່ສຽງອົງອື່ນ ໆ

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະອອກຈາກທີ່ຫຼີກເຣັ້ນ ໃນເວລາຄໍ່າ ເຂົ້າໄປຫາທ່ານພຣະມະຫາກັດສະປະເຖິງທີ່ຢູ່ ແລ້ວໄດ້ກ່າວກັບທ່ານພຣະມະຫາກັດສະປະວ່າ "ເຮົາໄປກັນເທີ້ນ ທ່ານກັດສະປະ ເຮົາຈັກເຂົ້າໄປຫາທ່ານສາຣີບຸດເຖິງທີ່ຢູ່ເພື່ອຟັງທຳ"

ເມື່ອທ່ານພຣະມະຫາກັດສະປະຮັບຄຳແລ້ວ ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະ ທ່ານພຣະມະຫາກັດສະປະ ແລະ ທ່ານພຣະອະນຸຣຸດທະ ເຂົ້າໄປຫາທ່ານພຣະສາຣີບຸດເພື່ອຟັງທຳ ທ່ານພຣະອານົນໄດ້ເຫັນທ່ານພຣະມະຫາໂມກຄັນລານະ ທ່ານພຣະມະຫາກັດສະປະ ແລະ ທ່ານພຣະອະນຸຣຸດທະເຂົ້າໄປຫາທ່ານພຣະສາຣີບຸດເພື່ອຟັງທຳ ຈຶ່ງເຂົ້າໄປຫາທ່ານພຣະເຣວະຕະເຖິງທີ່ຢູ່ ແລ້ວກ່າວກັບທ່ານພຣະເຣວະຕະວ່າ "ທ່ານເຣວະຕະ ທ່ານສັດຕະບຸຣຸດເຫຼົ່ານັ້ນກຳລັງເຂົ້າໄປຫາທ່ານສາຣີບຸດເພື່ອຟັງທຳ ເຮົາໄປກັນເທີ້ນ ທ່ານເຣວະຕະ ເຮົາຈັກເຂົ້າໄປຫາທ່ານສາຣີບຸດເພື່ອຟັງທຳ" ທ່ານພຣະເຣວະຕະຮັບຄຳທ່ານພຣະອານົນແລ້ວ ຄັ້ງນັ້ນ ທ່ານພຣະເຣວະຕະ ແລະທ່ານພຣະອານົນເຂົ້າໄປຫາທ່ານພຣະສາຣີບຸດເພື່ອຟັງທຳ

[໓໓໓] ທ່ານພຣະສາຣີບຸດໄດ້ເຫັນທ່ານພຣະເຣວະຕະ ແລະ ທ່ານພຣະອານົນກຳລັງຍ່າງມາແຕ່ໄກ ແລ້ວໄດ້ກ່າວກັບທ່ານພຣະອານົນວ່າ "ທ່ານອານົນ ຈົ່ງມາເທີ້ນ ທ່ານອານົນຜູ້ເປັນອຸປັດຖາກຂອງພຣະຜູ້ມີພຣະພາກເຈົ້າ ຜູ້ຢູ່ໃກ້ພຣະຜູ້ມີພຣະພາກເຈົ້າ ໄດ້ມາດີແລ້ວ ປ່າໂຄສິງຄະສາລະວັນ ເປັນສະຖານທີ່ໜ້າອອນຊອນ ຣາຕີແຈ່ມແຈ້ງ ໄມ້ສາລະບານສະພັ່ງທົ່ວທຸກຕົ້ນ ກິ່ນເໝືອນກິ່ນທິບຍ່ອມຟຸ້ງໄປ ທ່ານອານົນ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?"

## ທັດສະນະຂອງພຣະອານົນ

ທ່ານພຣະອານົນຕອບວ່າ "ທ່ານສາຣີບຸດ ພິກຂຸໃນພຣະທຳວິໄນນີ້ ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ[១] ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນທີ່ສຸດ ພ້ອມທັງອັດຖະແລະພະຍັນຊະນະ ປະກາດພົມມະຈັນບໍລິສຸດບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແລະ ແທງຕະຫຼອດດີດ້ວຍທິດຖິ ພິກຂຸນັ້ນສະແດງທຳແກ່ບໍລິສັດ ໔ ດ້ວຍບົດແລະພະຍັນຊະນະທີ່ຮຽບງ່າຍ ແລະຕໍ່ເນື່ອງບໍ່ຂາດສາຍເພື່ອຖອນອະນຸໄສ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

## ທັດສະນະຂອງພຣະເຣວະຕະ

[໓໓໔] ເມື່ອທ່ານພຣະອານົນກ່າວແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານພຣະເຣວະຕະວ່າ "ທ່ານເຣວະຕະ ທ່ານອານົນຕອບຕາມປະຕິພານຂອງຕົນ ບັດນີ້ ເຮົາຂໍຖາມທ່ານເຣວະຕະໃນຂໍ້ນັ້ນວ່າ "ປ່າໂຄສິງຄະສາລະວັນ ເປັນສະຖານທີ່ໜ້າອອນຊອນ ຣາຕີແຈ່ມແຈ້ງ ໄມ້ສາລະບານສະພັ່ງທົ່ວທຸກຕົ້ນ ກິ່ນເໝືອນກິ່ນທິບຍ່ອມຟຸ້ງໄປ ທ່ານເຣວະຕະ ປ່າໂຄສິງຄະສາລະວັນ ຈະເພິ່ງງາມດ້ວຍພິກຂຸປະເພດໃດ?"

ທ່ານພຣະເຣວະຕະຕອບວ່າ "ທ່ານສາຣີບຸດ ພິກຂຸໃນພຣະທຳວິໄນນີ້ເປັນຜູ້ມີຄວາມຫຼີກເຮັ້ນເປັນທີ່ໜ້າຍິນດີ ຍິນດີແລ້ວໃນຄວາມຫຼີກເຮັ້ນ ໝັ່ນປະກອບທຳເຄື່ອງລະງັບໃຈພາຍໃນຕົນບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

## ທັດນະຂອງພຣະອະນຸຣຸດທະ

[໓໓໕] ເມື່ອທ່ານພຣະເຣວະຕະກ່າວແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານພຣະອະນຸຣຸດທະວ່າ "ທ່ານອະນຸຣຸດທະ ທ່ານເຣວະຕະຕອບຕາມປະຕິພານຂອງຕົນ ບັດນີ້ ເຮົາຂໍຖາມທ່ານອະນຸຣຸດທະໃນຂໍ້ນັ້ນວ່າ "ປ່າໂຄສິງຄະສາລະວັນ ເປັນສະຖານທີ່ໜ້າອອນຊອນ ຣາຕີແຈ່ມແຈ້ງ ໄມ້ສາລະບານສະພັ່ງທົ່ວທຸກຕົ້ນ ກິ່ນເໝືອນກິ່ນທິບຍ່ອມຟຸ້ງໄປ ທ່ານອະນຸຣຸດທະ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?"

ທ່ານພຣະອະນຸຣຸດທະຕອບວ່າ "ທ່ານສາຣີບຸດ ພິກຂຸໃນພຣະທຳວິໄນນີ້ຍ່ອມກວດເບິ່ງໂລກກະທາດ ໑,໐໐໐ ໂລກກະທາດດ້ວຍຕາທິບອັນບໍລິສຸດເໜືອມະນຸດ ບຸຣຸດຜູ້ມີຕາດີຂຶ້ນຜາສາດ ອັນໂອ່ອ່າຊັ້ນເທິງ ຈະສະມາດແນມເບິ່ງວົງກົມແຫ່ງກົງລໍ້ມີຈຳນວນ ໑,໐໐໐ ໄດ້ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຍ່ອມກວດເບິ່ງໂລກກະທາດ ໑,໐໐໐ ໂລກກະທາດ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

## ທັດສະນະຂອງພຣະມະຫາກັດສະປະ

[໓໓໖] ເມື່ອທ່ານພຣະອະນຸຣຸດທະກ່າວແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານພຣະມະຫາກັດສະປະວ່າ "ທ່ານກັດສະປະ ທ່ານອະນຸຣຸດທະຕອບຕາມປະຕິພານຂອງຕົນ ບັດນີ້ ເຮົາຂໍຖາມທ່ານກັດສະປະໃນຂໍ້ນັ້ນວ່າ "ປ່າໂຄສິງຄະສາລະວັນ ເປັນສະຖານທີ່ໜ້າອອນຊອນ ຣາຕີແຈ່ມແຈ້ງ ໄມ້ສາລະບານສະພັ່ງທົ່ວທຸກຕົ້ນ ກິ່ນເໝືອນກິ່ນທິບຍ່ອມຟຸ້ງໄປ ທ່ານກັດສະປະ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?"

ທ່ານພຣະມະຫາກັດສະປະຕອບວ່າ "ທ່ານສາຣີບຸດ ພິກຂຸໃນພຣະທຳວິໄນນີ້ ຕົນເອງ ຢູ່ປ່າເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ຕົນເອງທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຕົນເອງຖືຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ຖືຜ້າບັງສຸກຸນ ເປັນຂໍ້ວັດປະຕິບັດ ຕົນເອງຖືໄຕຣຈີວອນເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ຖືໄຕຣຈີວອນເປັນຂໍ້ວັດປະຕິບັດ ຕົນເອງເປັນຜູ້ມັກໜ້ອຍ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ມັກໜ້ອຍ ຕົນເອງເປັນຜູ້ສັນໂດດ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສັນໂດດ ຕົນເອງເປັນຜູ້ສະຫງັດ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສະຫງັດ ຕົນເອງເປັນຜູ້ບໍ່ຄຸກຄີ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ບໍ່ຄຸກຄີ ຕົນເອງເປັນຜູ້ພາຣົບຄວາມພຽນ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ພາຣົບຄວາມພຽນ ຕົນເອງເປັນຜູ້ສົມບູນດ້ວຍສີນ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍສີນ ຕົນເອງເປັນຜູ້ສົມບູນດ້ວຍສະມາທິ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍສະມາທິ ຕົນເອງເປັນຜູ້ສົມບູນດ້ວຍປັນຍາ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍປັນຍາ ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍວິມຸດຕິ ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນ ດ້ວຍວິມຸດຕິຍານທັດສະນະ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

## ທັດສະນະຂອງພຣະມະຫາໂມກຄັນລານະ

[໓໓໗] ເມື່ອທ່ານພຣະມະຫາກັດສະປະກ່າວແບບນີ້ແລ້ວ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານພຣະມະຫາໂມກຄັນລານະວ່າ "ທ່ານໂມກຄັນລານະ ທ່ານມະຫາກັດສະປະຕອບຕາມປະຕິພານຂອງຕົນ ບັດນີ້ ເຮົາຂໍຖາມທ່ານມະຫາໂມກຄັນລານະໃນຂໍ້ນັ້ນວ່າ "ປ່າໂຄສິງຄະສາລະວັນເປັນສະຖານທີ່ໜ້າອອນຊອນ ຣາຕີແຈ່ມແຈ້ງ ໄມ້ສາລະບານສະພັ່ງທົ່ວທຸກຕົ້ນ ກິ່ນເໝືອນກິ່ນທິບຍ່ອມຟຸ້ງໄປ ທ່ານໂມກຄັນລານະ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?"

ທ່ານພຣະມະຫາໂມກຄັນລານະຕອບວ່າ "ທ່ານສາຣີບຸດ ພິກຂຸ ໒ ອົງ ໃນພຣະທຳວິໄນນີ້ ກ່າວອະພິທຳກະຖາ ທ່ານທັງ ໒ ອົງນັ້ນ ຖາມບັນຫາກັນ ແລະ ກັນແລ້ວຍ່ອມແກ້ກັນເອງບໍ່ຢຸດພັກ ແລະ ທຳມີກະຖາຂອງທ່ານທັງ ໒ ນັ້ນ ກໍດຳເນີນຕໍ່ໄປ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

## ທັດສະນະຂອງພຣະສາຣີບຸດ

[໓໓໘] ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ່ານພຣະສາຣີບຸດວ່າ

"ທ່ານສາຣີບຸດ ພວກເຮົາທັງໝົດຕອບຕາມປະຕິພານຂອງຕົນ ບັດນີ້ ເຮົາຂໍຖາມທ່ານສາຣີບຸດໃນຂໍ້ນັ້ນວ່າ "ປ່າໂຄສິງຄະສາລະວັນ ເປັນສະຖານທີ່ໜ້າອອນຊອນ ຣາຕີແຈ່ມແຈ້ງ ໄມ້ສາລະບານສະພັ່ງທົ່ວທຸກຕົ້ນ ກິ່ນເໝືອນກິ່ນທິບຍ່ອມຟຸ້ງໄປ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?"

ທ່ານພຣະສາຣີບຸດຕອບວ່າ "ທ່ານໂມກຄັນລານະ ພິກຂຸໃນພຣະທຳວິໄນນີ້ເຮັດຈິດໃຫ້ຢູ່ໃນອຳນາດ (ຂອງຕົນ) ແລະບໍ່ຍອມຢູ່ໃນອຳນາດຂອງຈິດ ທ່ານຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາເຊົ້າ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາເຊົ້າ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາທ່ຽງ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາທ່ຽງ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາຄ່ຳ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາຄ່ຳ ປຽບເໝືອນ ຫີບຜ້າຂອງພຣະຣາຊາຫຼືຣາຊະມະຫາອຳມາດ ເຊິ່ງເຕັມດ້ວຍຜ້າທີ່ຍ້ອມແລ້ວເປັນສີຕ່າງ ໆ ພຣະຣາຊາຫຼືຣາດຊະມະຫາອຳມາດນັ້ນ ຫວັງຈະຫົ່ມຜ້າຄູ່ໃດໃນເວລາເຊົ້າ ກໍຫົ່ມຜ້າຄູ່ນັ້ນໃນເວລາເຊົ້າ ຫວັງຈະຫົ່ມຜ້າຄູ່ໃດໃນເວລາທ່ຽງ ກໍຫົ່ມຜ້າຄູ່ນັ້ນໃນເວລາທ່ຽງ ຫວັງຈະຫົ່ມຜ້າຄູ່ໃດໃນເວລາຄ່ຳ ກໍຫົ່ມຜ້າຄູ່ນັ້ນໃນເວລາຄ່ຳແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເຮັດຈິດໃຫ້ຢູ່ໃນອຳນາດ (ຂອງຕົນ) ແລະບໍ່ຍອມຢູ່ໃນອຳນາດຂອງຈິດ ທ່ານຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາເຊົ້າ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາເຊົ້າ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາທ່ຽງ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາທ່ຽງ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາຄ່ຳ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາຄ່ຳ ທ່ານໂມກຄັນລານະ ປ່າໂຄສິງຄະສາລະວັນເພິ່ງງາມ ດ້ວຍພິກຂຸປະເພດນີ້"

## ຊົງຮັບຮອງທັດສະນະຂອງພຣະເຖຣະທັງໝົດ

[໓໓໙] ຄັ້ງນັ້ນ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານເຫຼົ່ານັ້ນວ່າ "ທ່ານທັງຫຼາຍ ພວກເຮົາທັງໝົດຕອບຕາມປະຕິພານຂອງຕົນ ພວກເຮົາໄປກັນເທີ້ນ ພວກເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ແລ້ວຈັກຂາບທູນເນື້ອຄວາມນີ້ແດ່ພຣະອົງ ພຣະຜູ້ມີພຣະພາກຈັກຊົງຕອບແກ່ເຮົາທັງຫຼາຍແນວໃດ ພວກເຮົາກໍຈັກຊົງຈຳຂໍ້ຄວາມນັ້ນໄວ້ຢ່າງນັ້ນ"

ທ່ານເຫຼົ່ານັ້ນ ຮັບຄຳແລ້ວ ຈາກນັ້ນ ທ່ານເຫຼົ່ານັ້ນ ກໍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ນັ່ງໃນທີ່ສົມຄວນ ທ່ານພຣະສາຣີບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ທ່ານເຣວະຕະ ທ່ານອານົບ ເຂົ້າໄປຫາຂ້າພຣະອົງເຖິງທີ່ຢູ່ເພື່ອຟັງທຳ ຂ້າພຣະອົງໄດ້ເຫັນທ່ານເຣວະຕະ ແລະ ທ່ານອານົບກຳລັງຍ່າງມາແຕ່ໄກ ແລ້ວໄດ້ກ່າວກັບທ່ານອານົບວ່າ "ທ່ານອານົບ ຈົ່ງມາເທີ້ນ ທ່ານອານົບຜູ້ເປັນອຸ

ປັດຖາກຂອງພຣະຜູ້ມີພຣະພາກເຈົ້າ ຜູ້ຢູ່ໃກ້ພຣະຜູ້ມີພຣະພາກເຈົ້າ ໄດ້ມາດີແລ້ວ ປ່າໂຄສິງຄະສາລະວັນ ເປັນສະຖານທີ່ໜ້າອອນຊອນ ຣາຕີແຈ່ມແຈ້ງ ໄມ້ສາລະບານສະພັ່ງທົ່ວທຸກຕົ້ນ ມີກິ່ນເໝືອນກິ່ນທິບຍ່ອມຟຸ້ງໄປ ທ່ານອານົນ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?" ເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ທ່ານອານົນໄດ້ຕອບຂ້າພຣະອົງວ່າ "ທ່ານສາຣີບຸດ ພິກຂຸໃນພຣະທຳວິໄນນີ້ເປັນພະຫູສູດ ເປັນຜູ້ຊົງສຸຕະ ຯລຯ ເພື່ອຖອນອະນຸໄສ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ສາຣີບຸດ ອານົນເມື່ອຈະຕອບຢ່າງຖືກຕ້ອງກໍຄວນຕອບຕາມນັ້ນ ດ້ວຍວ່າອານົນເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນທີ່ສຸດ ພ້ອມທັງອັດຖະແລະພະຍັນຊະນະ ປະກາດພົມມະຈັນ ບໍລິສຸດ ບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ອານົນນັ້ນສະແດງທຳແກ່ບໍລິສັດ ໔ ດ້ວຍບົດແລະພະຍັນຊະນະທີ່ພຽງງ່າຍ ແລະ ຕໍ່ເນື່ອງບໍ່ຂາດສາຍ ເພື່ອຖອນອະນຸໄສ"

[໓໔໐] ທ່ານພຣະສາຣີບຸດຂາບທູນຕໍ່ໄປວ່າ "ຂ້ານ້ອຍ ເມື່ອທ່ານອານົນກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບທ່ານເຣວະຕະວ່າ "ທ່ານເຣວະຕະ ທ່ານອານົນຕອບຕາມປະຕິພານຂອງຕົນ ເຮົາຂໍຖາມທ່ານເຣວະຕະໃນຂໍ້ນັ້ນວ່າ "ປ່າໂຄສິງຄະສາລະວັນເປັນສະຖານທີ່ໜ້າອອນຊອນ ຣາຕີແຈ່ມແຈ້ງ ໄມ້ສາລະບານສະພັ່ງທົ່ວທຸກຕົ້ນ ກິ່ນເໝືອນກິ່ນທິບຍ່ອມຟຸ້ງໄປ ທ່ານເຣວະຕະ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?" ເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ທ່ານເຣວະຕະໄດ້ຕອບຂ້າພຣະອົງວ່າ "ທ່ານສາຣີບຸດ ພິກຂຸໃນພຣະທຳວິໄນນີ້ເປັນຜູ້ມີຄວາມຫຼີກລີ້ເປັນທີ່ໜ້າຍິນດີ ຍິນດີແລ້ວໃນຄວາມຫຼີກເຣັ້ນ ໝັ່ນປະກອບທຳເຄື່ອງລະງັບໃຈພາຍໃນຕົນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ສາຣີບຸດ ເຣວະຕະເມື່ອຈະຕອບຢ່າງຖືກຕ້ອງກໍຄວນຕອບຕາມນັ້ນ ດ້ວຍວ່າ ເຣວະຕະເປັນຜູ້ມີຄວາມຫຼີກເຣັ້ນເປັນທີ່ມາຍິນດີ ຍິນດີແລ້ວໃນຄວາມຫຼີກເຣັ້ນ ໝັ່ນປະກອບທຳເຄື່ອງລະງັບໃຈພາຍໃນຕົນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ"

[໓໔໑] ທ່ານພຣະສາຣີບຸດຂາບທູນວ່າ "ໂດຍຂ້ານ້ອຍ ເມື່ອທ່ານເຣວະຕະກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບທ່ານອະນຸຣຸດທະວ່າ "ທ່ານອະນຸຣຸດທະ ທ່ານເຣວະຕະຕອບຕາມປະຕິພານຂອງຕົນ ຯລຯ ທ່ານອະນຸຣຸດທະ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?" ເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ທ່ານອະນຸຣຸດທະໄດ້ຕອບຂ້າພຣະອົງວ່າ "ທ່ານ

ສາຣີບຸດ ພິກຂຸໃນພຣະທຳວິໄນນີ້ຍ່ອມກວດເບິ່ງໂລກກະທາດ ໑,໐໐໐ ໂລກກະທາດ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ບຸຣຸດຜູ້ມີຕາດີຂຶ້ນຜາສາດອັນໂອອ່າຊັ້ນເທິງ ຈະເພິ່ງແນມເບິ່ງ ວົງກົມແຫ່ງກົງລໍ້ຈຳນວນ ໑,໐໐໐ ໄດ້ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຍ່ອມກວດ ເບິ່ງໂລກກະທາດ ໑,໐໐໐ ໂລກກະທາດ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ສາຣີບຸດ ອະນຸຣຸດທະເມື່ອຈະຕອບຢ່າງຖືກຕ້ອງກໍຄວນຕອບຕາມນັ້ນ ດ້ວຍວ່າ ອະນຸຣຸດທະຍ່ອມກວດເບິ່ງໂລກກະທາດ ໑,໐໐໐ ໂລກກະທາດດ້ວຍຕາທິບອັນບໍລິສຸດເໜືອມະນຸດ"

[໓໔໘] ທ່ານພຣະສາຣີບຸດຂາບທູນວ່າ "ໂດຍຂ້ານ້ອຍ ເມື່ອທ່ານອະນຸຣຸດທະກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບທ່ານມະຫາກັດສະປະວ່າ "ທ່ານກັດສະປະ ທ່ານອະນຸຣຸດທະຕອບຕາມປະຕິພານຂອງຕົນ ເຮົາຂໍຖາມທ່ານມະຫາກັດສະປະໃນຂໍ້ນັ້ນວ່າ "ฯລฯ ທ່ານກັດສະປະ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?" ເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ທ່ານມະຫາກັດສະປະໄດ້ຕອບຂ້າພຣະອົງວ່າ "ທ່ານສາຣີບຸດ ພິກຂຸໃນພຣະທຳວິໄນນີ້ ຕົນເອງຢູ່ປ່າເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ຕົນເອງທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ฯລฯ ຕົນເອງຖືຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ฯລฯ ຕົນເອງຖືໄຕຣຈີວອນເປັນຂໍ້ວັດປະຕິບັດ ฯລฯ ຕົນເອງເປັນຜູ້ມັກໜ້ອຍ ฯລฯ ຕົນເອງເປັນຜູ້ສັນໂດດ ฯລฯ ຕົນເອງເປັນຜູ້ສະຫງັດ ฯລฯ ຕົນເອງເປັນຜູ້ບໍ່ຄຸກຄີ ฯລฯ ຕົນເອງເປັນຜູ້ຜາຣົບຄວາມພຽນ ฯລฯ ຕົນເອງເປັນຜູ້ສົມບູນດ້ວຍສີນ ฯລฯ ຕົນເອງເປັນຜູ້ສົມບູນດ້ວຍສະມາທິ ฯລฯ ຕົນເອງເປັນຜູ້ສົມບູນດ້ວຍປັນຍາ ฯລฯ ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິ ฯລฯ ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ສາຣີບຸດ ກັດສະປະເມື່ອຈະຕອບຢ່າງຖືກຕ້ອງ ກໍຄວນຕອບຕາມນັ້ນ ດ້ວຍວ່າ ກັດສະປະນັ້ນ ຕົນເອງຢູ່ປ່າເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ຕົນເອງທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຕົນເອງຖືຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ຖືຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຕົນເອງຖືໄຕຣຈີວອນເປັນຂໍ້ວັດປະຕິບັດ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ຖືໄຕຣຈີວອນເປັນຂໍ້ວັດປະຕິບັດ ຕົນເອງເປັນຜູ້ມັກໜ້ອຍ ແລະ ກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ມັກໜ້ອຍ ຕົນເອງເປັນຜູ້ສັນໂດດ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສັນໂດດ ຕົນເອງເປັນຜູ້ສະຫງັດ ແລະ ກ່າວສັນເສີນຄຸນແຫ່ງ ຄວາມເປັນຜູ້ສະຫງັດ ຕົນເອງເປັນຜູ້ບໍ່ຄຸກຄີ ແລະກ່າວ

ສັນເສີນຄຸນແຫ່ງຄວາມເປັນຜູ້ບໍ່ຄຸກຄີ ຕົນເອງເປັນຜູ້ຜາຣົບຄວາມພຽນ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ຜາຣົບຄວາມພຽນ ຕົນເອງເປັນຜູ້ສົມບູນດ້ວຍສີນ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍສີນ ຕົນເອງເປັນຜູ້ສົມບູນດ້ວຍສະມາທິ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍສະມາທິ ຕົນເອງເປັນຜູ້ສົມບູນດ້ວຍປັນຍາ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍປັນຍາ ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍວິມຸດຕິ ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະ ແລະກ່າວສັນເສີນຄຸນແຫ່ງຄວາມເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະ”

[໓໔໓] ທ່ານພຣະສາຣີບຸດຂາບທູນວ່າ “ໂດຍຂ້ານ້ອຍ ເມື່ອທ່ານມະຫາກັດສະປະ ກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບທ່ານມະຫາໂມກຄັນລານະວ່າ “ທ່ານໂມກຄັນລານະ ທ່ານມະຫາກັດສະປະຕອບຕາມປະຕິພານຂອງຕົນ ເຮົາຂໍຖາມທ່ານໂມກຄັນລານະໃນຂໍ້ນັ້ນວ່າ “ຯລຯ ທ່ານໂມກຄັນລານະ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?” ເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ທ່ານມະຫາໂມກຄັນລານະໄດ້ຕອບຂ້າພຣະອົງວ່າ “ທ່ານສາຣີບຸດ ພິກຂຸ ໒ ອົງໃນພຣະທຳວິໄນນີ້ກ່າວອະພິທຳກະຖາ ທ່ານທັງ ໒ ອົງນັ້ນ ຖາມບັນຫາກັນແລະກັນ ແລ້ວຍ່ອມແກ້ກັນເອງບໍ່ຢຸດພັກ ແລະທຳມີກະຖາຂອງທ່ານທັງ ໒ ນັ້ນກໍດຳເນີນຕໍ່ໄປ ທ່ານສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ດີແລ້ວ ດີແລ້ວ ສາຣີບຸດ ໂມກຄັນລານະເມື່ອຈະຕອບຢ່າງຖືກຕ້ອງກໍຄວນຕອບຕາມນັ້ນ ດ້ວຍວ່າ ໂມກຄັນລານະເປັນທຳມະກະຖຶກ”

[໓໔໔] ເມື່ອທ່ານພຣະສາຣີບຸດກ່າວແນວນັ້ນແລ້ວ ທ່ານພຣະມະຫາໂມກຄັນລານະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຫຼັງຈາກນັ້ນ ຂ້າພຣະອົງໄດ້ກ່າວກັບທ່ານສາຣີບຸດວ່າ “ທ່ານສາຣີບຸດ ພວກເຮົາທັງໝົດຕອບຕາມປະຕິພານຂອງຕົນ ບັດນີ້ ເຮົາຂໍຖາມທ່ານສາຣີບຸດໃນຂໍ້ນັ້ນວ່າ “ປ່າໂຄສິງຄະສາລະວັນເປັນສະຖານທີ່ໜ້າອອນຊອນ ຣາຕີແຈ່ມແຈ້ງ ໄມ້ສາລະບານສະພັ່ງທົ່ວທຸກຕົ້ນ ກິ່ນເໝືອນກິ່ນທິບຍ່ອມຟຸ້ງໄປ ທ່ານ ສາຣີບຸດ ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?” ເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ທ່ານສາຣີບຸດໄດ້ຕອບຂ້າພຣະອົງວ່າ “ທ່ານໂມກຄັນລານະ ພິກຂຸໃນພຣະທຳວິໄນນີ້ ເຮັດຈິດໃຫ້ຢູ່ໃນອຳນາດ (ຂອງຕົນ) ແລະບໍ່ຍອມຢູ່ໃນອຳນາດຂອງຈິດ ທ່ານຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາເຊົ້າ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາເຊົ້າ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາທ່ຽງ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາທ່ຽງ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາຄໍ່າ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາຄໍ່າ ປຽບເໝືອນ ຫີບຜ້າຂອງພຣະຣາຊາ ຫຼືຣາດຊະມະຫາອຳມາດເຊິ່ງເຕັມດ້ວຍຜ້າທີ່ຍ້ອມເປັນສີຕ່າງ ໆ ພຣະຣາຊາ ຫຼື ຣາຊະມະຫາອຳມາດນັ້ນ ຫວັງຈະຫົ່ມຜ້າຄູ່ໃດໃນເວລາເຊົ້າ ກໍຫົ່ມຜ້າຄູ່ນັ້ນໃນເວລາເຊົ້າ ຫວັງຈະຫົ່ມຜ້າຄູ່ໃດ

ໃນເວລາທ່ຽງ ກໍຫົ່ມຜ້າຄູ່ນັ້ນໃນເວລາທ່ຽງ ຫວັງຈະຫົ່ມຜ້າຄູ່ໃດໃນເວລາຄ່ຳ ກໍຫົ່ມຜ້າຄູ່ນັ້ນໃນເວລາຄ່ຳ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເຮັດຈິດໃຫ້ຢູ່ໃນອຳນາດ (ຂອງຕົນ) ແລະບໍ່ຍອມຢູ່ໃນອຳນາດຂອງຈິດ ທ່ານຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາເຊົ້າ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາເຊົ້າ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາທ່ຽງ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາທ່ຽງ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາຄ່ຳ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາຄ່ຳ ທ່ານໂມກຄັນລານະ ປ່າງົວສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ໂມກຄັນລານະ ສາຣີບຸດເມື່ອຕອບຢ່າງຖືກຕ້ອງກໍຄວນຕອບຕາມນັ້ນ ດ້ວຍວ່າ ສາຣີບຸດເຮັດຈິດໃຫ້ຢູ່ໃນອຳນາດ (ຂອງຕົນ) ແລະບໍ່ຍອມຢູ່ໃນອຳນາດຂອງຈິດ ທ່ານຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາເຊົ້າ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາເຊົ້າ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາທ່ຽງ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາທ່ຽງ ຫວັງຈະຢູ່ດ້ວຍວິຫານສະມາບັດໃດໃນເວລາຄ່ຳ ກໍຢູ່ດ້ວຍວິຫານສະມາບັດນັ້ນໃນເວລາຄ່ຳ"

## ປ່າງາມດ້ວຍຄວາມພຽນ

[໓໔໕] ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ແລ້ວ ທ່ານພຣະສາຣີບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຄຳຂອງຜູ້ໃດນໍ? ເປັນສຸພາສິດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ຄຳຂອງທ່ານທັງໝົດເປັນສຸພາສິດໂດຍເຫດນັ້ນ ໆ ແຕ່ທ່ານທັງຫຼາຍຈົ່ງຟັງຄຳຂອງເຮົາ ຫາກມີຄຳຖາມວ່າ "ປ່າໂຄສິງຄະສາລະວັນຈະເພິ່ງງາມດ້ວຍພິກຂຸປະເພດໃດ?" ເຮົາຈັກຕອບວ່າ "ສາຣີບຸດ ພິກຂຸໃນທຳວິໄນນີ້ກັບຈາກບິນທະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າວ່າ "ຖ້າຈິດຂອງເຮົາຍັງບໍ່ໝົດຄວາມຖືໝັ້ນ (ແລະ) ບໍ່ລຸດພົ້ນຈາກອາສະວະທັງຫຼາຍພຽງໃດ ເຮົາຈັກບໍ່ທຳລາຍບັນລັງນີ້ພຽງນັ້ນ" ສາຣີບຸດ ປ່າໂຄສິງຄະສາລະວັນເພິ່ງງາມດ້ວຍພິກຂຸປະເພດນີ້"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາໂຄສິງຄະສູດທີ ໘ ຈົບ**

# ๓. ມະຫາໂຄປາລະສູດ

## ວ່າດ້ວຍຄົນລ້ຽງງົວ ສູດໃຫຍ່

### ເຫດແຫ່ງຄວາມບໍ່ຈະເລີນ

[໓໔໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ “ພິກຂຸທັງຫຼາຍ” ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກຈຶ່ງໄດ້ຕັດເລື້ອງນີ້ ວ່າ

“ພິກຂຸທັງຫຼາຍ ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການ ເປັນຜູ້ບໍ່ສາມາດລ້ຽງຝູງງົວໃຫ້ຈະເລີນ ໃຫ້ເພີ່ມຂຶ້ນໄດ້ ອົງ ໑໑ ປະການ ອັນໃດແນ ຄື ຄົນລ້ຽງງົວໃນໂລກນີ້

໑. ບໍ່ຮູ້ຮູບງົວ
໒. ບໍ່ກຳຈັດໄຂ່ຂາງ
໓. ບໍ່ດັງໄຟ
໔. ບໍ່ຮູ້ວ່າງົວກິນນ້ຳແລ້ວ
໕. ບໍ່ສະຫຼາດໃນບ່ອນຫາກິນ
໖. ບໍ່ສະຫຼາດໃນລັກສະນະງົວ
໗. ບໍ່ປົກອັດບາດ
໘. ບໍ່ຮູ້ທ່ານ້ຳ
໙. ບໍ່ຮູ້ທາງ
໑໐. ຣີດນົມບໍ່ໃຫ້ເຫຼືອ
໑໑. ບໍ່ບູຊາງົວຜູ້ທັງຫຼາຍທີ່ເປັນພໍ່ງົວ ເປັນຈ່າຝູງ ດ້ວຍການບູຊາຢ່າງຍິ່ງ

ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການນີ້ແລ ເປັນຜູ້ບໍ່ສາມາດຈະລ້ຽງຝູງງົວໃຫ້ຈະເລີນ ໃຫ້ເພີ່ມຂຶ້ນໄດ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໑໑ ປະການກໍຄືກັນສັນນັ້ນ ເປັນຜູ້ບໍ່ສາມາດເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້ໄດ້ ທຳ ໑໑ ປະການ ອັນໃດແນ ຄື ພິກຂຸໃນທຳວິໄນນີ້

໑. ບໍ່ຮູ້ຮູບ
໒. ບໍ່ກຳຈັດໄຂ່ຂາງ
໓. ບໍ່ດັງໄຟ
໔. ບໍ່ຮູ້ທຳທີ່ດື່ມແລ້ວ
໖. ບໍ່ສະຫຼາດໃນລັກສະນະ
໗. ບໍ່ປົກອັດບາດ
໘. ບໍ່ຮູ້ທ່ານ້ຳ
໙. ບໍ່ຮູ້ທາງ

໙. ບໍ່ສະຫຼາດໃນໂຄຈອນ ໑໐. ຮີດນົມບໍ່ໃຫ້ເຫຼືອ

໑໑. ບໍ່ບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດມາດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ

[໓໕໗] ພິກຂຸບໍ່ຮູ້ຮົງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ຮູ້ແຈ້ງຮູບແນວໃດແນວໜຶ່ງຕາມຄວາມເປັນຈິງວ່າ “ມະຫາພູຕະຮູບ ໔ ແລະ ຮູບທີ່ອາໄສມະຫາພູຕະຮູບ ໔” ພິກຂຸເປັນຜູ້ບໍ່ຮູ້ຮົງ ເປັນແນວນີ້ແລ

ພິກຂຸບໍ່ສະຫຼາດໃນລັກສະນະ[໑] ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ “ຄົນພານມີກຳເປັນລັກສະນະ ບັນດິດມີກຳເປັນລັກສະນະ” ພິກຂຸບໍ່ສະຫຼາດໃນລັກສະນະ ເປັນແນວນີ້ແລ

ພິກຂຸບໍ່ກຳຈັດໄຂ່ຂາງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮັບການວິຕົກທີ່ເກີດຂື້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ສິ້ນສຸດ ບໍ່ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ຮັບພະຍາບາດວິຕົກທີ່ເກີດຂື້ນ ຯລຯ ຮັບວິຫິງສາວິຕົກທີ່ເກີດຂື້ນ ຯລຯ ຮັບບາບອະກຸສົນທຳທີ່ເກີດຂື້ນແລ້ວເກີດຂື້ນອີກ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ ສິ້ນສຸດ ບໍ່ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ພິກຂຸບໍ່ກຳຈັດໄຂ່ຂາງ ເປັນແນວນີ້ແລ

ພິກຂຸບໍ່ປົກອັດບາດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວຮວບຖື[໒] ແຍກຖື[໓] ບໍ່ປະຕິບັດເພື່ອສັງລວມໃນຈັກຂຸນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ບໍ່ຖືຮັກສາຈັກຂຸນຊີ ບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງ ທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວຮວບຖື ແຍກຖື ບໍ່ປະຕິບັດເພື່ອສັງລວມໃນມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະ ໂທມະນັດຄອບງຳໄດ້ ບໍ່ຖືຮັກສາມະນິນຊີ ບໍ່ເຖິງຄວາມສັງລວມໃນມະນິນຊີ ພິກຂຸບໍ່ປົກອັດບາດ ເປັນແນວນີ້ແລ

ພິກຂຸບໍ່ສຸມໄຟ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ສະແດງທຳຕາມທີ່ຟັງມາແລ້ວ ຕາມທີ່ຮ່ຳຮຽນມາແລ້ວ ແກ່ຄົນອື່ນໆ ໂດຍພິດສະດານ ພິກຂຸບໍ່ສຸມໄຟ ເປັນແນວນີ້ແລ

ພິກຂຸບໍ່ຮູ້ທ່ານໍ້າ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຂົ້າໄປຫາພິກຂຸຜູ້ເປັນພະຫູສູດ ຜູ້ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາຕາມເວລາສົມຄວນ ບໍ່ສອບສວນໄຕ່ຖາມວ່າ "ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຸດທະພົດນີ້ເປັນແນວໃດ?" ທ່ານຜູ້ຄົງແກ່ຮຽນເຫຼົ່ານັ້ນບໍ່ເປີດເຜີຍທຳທີ່ຍັງບໍ່ໄດ້ເປີດເຜີຍ ບໍ່ເຮັດໃຫ້ງ່າຍເຊິ່ງທຳທີ່ຍັງບໍ່ເຮັດໃຫ້ງ່າຍ ແລະ ບໍ່ບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍຢ່າງແກ່ພິກຂຸນັ້ນ ພິກຂຸບໍ່ຮູ້ທ່ານໍ້າ ເປັນແນວນີ້ແລ

ພິກຂຸບໍ່ຮູ້ທຳທີ່ດື່ມແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ໄດ້ຄວາມຍິນດີອີງອັດຖະ ບໍ່ໄດ້ຄວາມຍິນດີອີງທຳ ບໍ່ໄດ້ປາໂມດທີ່ປະກອບດ້ວຍທຳໃນທຳວິໄນທີ່ຕະຖາຄົດປະກາດແລ້ວ ເຊິ່ງຜູ້ອື່ນສະແດງຢູ່ ພິກຂຸບໍ່ຮູ້ທຳທີ່ດື່ມແລ້ວເປັນຢ່າງນີ້ແລ

ພິກຂຸບໍ່ຮູ້ທາງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຮູ້ອະຣິຍະມັກມີອົງ ໘ ຕາມຄວາມເປັນຈິງ ພິກຂຸບໍ່ຮູ້ທາງ ເປັນແນວນີ້ແລ

ພິກຂຸບໍ່ສະຫຼາດໃນໂຄຈອນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຮູ້ແຈ້ງສະຕິປັດຖານ ໔ ປະການຕາມຄວາມເປັນຈິງ ພິກຂຸບໍ່ສະຫຼາດໃນໂຄຈອນ ເປັນແນວນີ້ແລ

ພິກຂຸຮີດນົມບໍ່ໃຫ້ເຫຼືອ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຮູ້ຈັກປະມານເພື່ອຈະຮັບຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ທີ່ພວກຄະຫະບໍດີຜູ້ມີສັດທາປະວາຣະນານຳໄປຖວາຍສະເພາະພິກຂຸຮີດນົມບໍ່ໃຫ້ເຫຼືອ ເປັນແນວນີ້ແລ

ພິກຂຸບໍ່ບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ເຂົ້າໄປຕັ້ງເມດຕາກາຍຍະກຳ ເມດຕາວະຈີກຳ ເມດຕາມະໂນກຳທັງຕໍ່ໜ້າ ແລະ ລັບຫຼັງໃນເຫຼົ່າພິກຂຸຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ພິກຂຸບໍ່ບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດ

ດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໑໑ ປະການນີ້ ເປັນຜູ້ບໍ່ສາມາດເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້ໄດ້

[໓໔໗] ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການ ເປັນຜູ້ສາມາດຈະລ້ຽງຝູງງົວໃຫ້ຈະເລີນໃຫ້ເພີ່ມຂຶ້ນໄດ້ ອົງ ໑໑ ປະການ ມີອັນໃດແນ?

ຄື ຄົນລ້ຽງງົວໃນໂລກນີ້

໑. ຮູ້ຮູບງົວ
໒. ກຳຈັດໄຂ່ຂາງ
໓. ດັງໄຟ
໗. ຮູ້ວ່າງົວກິນນ້ຳແລ້ວ
໙. ສະຫຼາດໃນບ່ອນຫາກິນ
໔. ສະຫຼາດໃນລັກສະນະງົວ
໕. ປົກອັດບາດ
໖. ຮູ້ທ່ານ້ຳ
໘. ຮູ້ທາງ
໑໐. ຮີດນົມໃຫ້ເຫຼືອ
໑໑. ບູຊາງົວຜູ້ທັງຫຼາຍທີ່ເປັນພໍ່ງົວ ເປັນຈ່າຝູງ ດ້ວຍການບູຊາຢ່າງຍິ່ງ

ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການນີ້ແລ ຈຶ່ງເປັນຜູ້ສາມາດຈະລ້ຽງຝູງງົວໃຫ້ຈະເລີນໃຫ້ເພີ່ມຂຶ້ນໄດ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໑໑ ປະການ ກໍຄືກັນສັນນັ້ນ ເປັນຜູ້ສາມາດເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້ໄດ້ ທຳ ໑໑ ປະການ ອັນໃດແນ?

ຄື ພິກຂຸໃນທຳວິໄນນີ້

໑. ຮູ້ຮູບ
໒. ກຳຈັດໄຂ່ຂາງ
໓. ດັງໄຟ
໗. ຮູ້ທຳທີ່ດື່ມແລ້ວ
໙. ສະຫຼາດໃນໂຄຈອນ
໔. ສະຫຼາດໃນລັກສະນະ
໕. ປົກອັດບາດ
໖. ຮູ້ທ່ານ້ຳ
໘. ຮູ້ທາງ
໑໐. ຮີດນົມໃຫ້ເຫຼືອ
໑໑. ບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ

[໓໔໙] ພິກຂຸຮູ້ອົງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຮູບແນວໃດແນວໜຶ່ງຕາມຄວາມເປັນຈິງ ວ່າ

"ມະຫາພູຕະຮູບ ໔ ແລະ ຮູບທີ່ອາໄສມະຫາພູຕະຮູບ ໔" ພິກຂຸຮູ້ຮູບ ເປັນແນວນີ້ແລ

ພິກຂຸສະຫຼາດໃນລັກສະນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ຄົນພານມີກຳເປັນລັກສະນະ ບັນດິດມີກຳເປັນລັກສະນະ" ພິກຂຸສະຫຼາດໃນລັກສະນະ ເປັນແນວນີ້ແລ

ພິກຂຸກຳຈັດໄຂ່ຂາງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ຮັບກາມວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ບໍ່ຮັບພະຍາບາດວິຕົກທີ່ເກີດຂຶ້ນ ฯລฯ ບໍ່ຮັບວິຫິງສາວິຕົກ ທີ່ເກີດຂຶ້ນ ฯລฯ ບໍ່ຮັບບາບອະກຸສົນທຳທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ລະ ບັນເທົາ ເຮັດໃຫ້ ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ພິກຂຸກຳຈັດໄຂ່ຂາງ ເປັນແນວນີ້ແລ

ພິກຂຸປົກອັດບາດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຫັນຮູບທາງຕາແລ້ວບໍ່ຮວບຖື ບໍ່ແຍກຖື ປະຕິບັດເພື່ອສັງລວມໃນຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ฯລฯ ດົມກິ່ນທາງດັງ ฯລฯ ຊີມຣົດທາງລີ້ນ ฯລฯ ຖືກຕ້ອງໂຜດຖັບພະທາງກາຍ ฯລฯ ຮູ້ແຈ້ງທຳມາຣົມທາງໃຈແລ້ວບໍ່ຮວບຖື ບໍ່ແຍກຖື ປະຕິບັດເພື່ອສັງລວມໃນມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາ ແລະ ໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸປົກອັດບາດເປັນຢ່າງນີ້ແລ

ພິກຂຸດັງໄຟ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະແດງທຳທີ່ຟັງມາແລ້ວ ຕາມທີ່ຮ່ຳຮຽນມາແລ້ວແກ່ຄົນອື່ນ ໆ ໂດຍພິດສະດານ ພິກຂຸສຸມໄຟ ເປັນແນວນີ້ແລ

ພິກຂຸຮູ້ທ່ານ້ຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຂົ້າໄປຫາພິກຂຸທັງຫຼາຍຜູ້ເປັນພະຫູສູດ ຜູ້ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາຕາມເວລາສົມຄວນ ສອບສວນໄຕ່ຖາມວ່າ "ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຸດທະພົດນີ້ເປັນແນວໃດ?" ທ່ານຜູ້ຄົງແກ່ຮຽນເຫຼົ່ານັ້ນ ຍ່ອມເປີດເຜີຍທຳທີ່ຍັງບໍ່ໄດ້ເປີດເຜີຍ ເຮັດໃຫ້ງ່າຍເຊິ່ງທຳທີ່ຍັງບໍ່ໄດ້ເຮັດໃຫ້ງ່າຍ ແລະ ບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍຢ່າງແກ່ພິກຂຸນັ້ນ ພິກຂຸຮູ້ທ່ານ້ຳ ເປັນແນວນີ້ແລ

ພິກຂຸຮູ້ທຳທີ່ດື່ມແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ໄດ້ຄວາມຍິນດີອີງອັດຖະ ໄດ້ຄວາມຍິນດີອີງທຳ ໄດ້ປາໂມດທີ່ປະກອບດ້ວຍທຳໃນທຳວິໄນທີ່ຕະຖາຄົດປະກາດແລ້ວ ເຊິ່ງຜູ້ອື່ນສະແດງຢູ່ ພິກຂຸຮູ້ທຳທີ່ດື່ມແລ້ວ ເປັນຢ່າງນີ້ແລ

ພິກຂຸຮູ້ທາງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຮູ້ອະຣິຍະມັກມີອົງ ໘ ຕາມຄວາມເປັນຈິງ ພິກຂຸຮູ້ທາງ ເປັນແນວນີ້ແລ

ພິກຂຸສະຫຼາດໃນໂຄຈອນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງສະຕິປັດຖານ ໔ ປະການ ຕາມຄວາມເປັນຈິງ ພິກຂຸສະຫຼາດໃນໂຄຈອນ ເປັນແນວນີ້ແລ

ພິກຂຸຮີດນົມໃຫ້ເຫຼືອ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຮູ້ຈັກປະມານເພື່ອຈະຮັບຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈ ເພສັດບໍຣິຂານທີ່ພວກຄະຫະບໍດີ ຜູ້ມີສັດທາປະວາຣະນານຳໄປຖວາຍສະເພາະ ພິກຂຸຮີດນົມໃຫ້ເຫຼືອ ເປັນຢ່າງນີ້ແລ

ພິກຂຸເປັນຜູ້ບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຂົ້າໄປຕັ້ງເມດຕາກາຍຍະກຳ ເມດຕາວະຈີກຳ ເມດຕາມະໂນກຳທັງຕໍ່ໜ້າແລະລັບຫຼັງໃນເຫຼົ່າພິກຂຸຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ພິກຂຸບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໑໑ ປະການນີ້ແລ ເປັນຜູ້ສາມາດ ເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາໂຄປາລະສູດທີ ໓ ຈົບ**

# ໔. ຈູລະໂຄປາລະສູດ

## ວ່າດ້ວຍຄົນລ້ຽງງົວ ສູດນ້ອຍ

### ຄົນລ້ຽງງົວຜູ້ບໍ່ສະຫຼາດ

[໓໕໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຣິມຝັ່ງແມ່ນ້ຳຄົງຄາ ເມືອງອຸກກະເຈລາ ແຄວ້ນວັດຊີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ຄົນລ້ຽງງົວຊາວແຄວ້ນມະຄົດ ເປັນຄົນໂງ່ມາແຕ່ກຳເນີດ ໃນສາຣະທະສະໄໝ ເຊິ່ງເປັນເດືອນທ້າຍແຫ່ງລະດູຝົນ ບໍ່ໄດ້ພິຈາລະນາຝັ່ງນີ້ແລະຝັ່ງນັ້ນແຫ່ງແມ່ນ້ຳຄົງຄາ ຕ້ອນຝູງງົວໃຫ້ຂ້າມໄປສູ່ຝັ່ງເໜືອຂອງຊາວແຄວ້ນວິເທຫະ ສະຖານທີ່ທີ່ບໍ່ແມ່ນທ່າ ຄັ້ງນັ້ນ ຝູງງົວລອຍເຂົ້າໄປໃນວັງນ້ຳວົນກາງແມ່ນ້ຳຄົງຄາ ເຖິງຄວາມພິນາດໃນແມ່ນ້ຳນັ້ນ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຄົນລ້ຽງງົວຊາວແຄວ້ນມະຄົດນັ້ນ ເປັນຄົນໂງ່ມາແຕ່ກຳເນີດ ໃນສາຣະທະສະໄໝ ເຊິ່ງເປັນເດືອນທ້າຍແຫ່ງລະດູຝົນ ບໍ່ໄດ້ພິຈາລະນາຝັ່ງນີ້ແລະຝັ່ງນັ້ນແຫ່ງແມ່ນ້ຳຄົງຄາ ຕ້ອນຝູງງົວໃຫ້ຂ້າມໄປສູ່ຝັ່ງເໜືອຂອງຊາວແຄວ້ນວິເທຫະ ສະຖານທີ່ທີ່ບໍ່ແມ່ນທ່າແມ່ນສັນໃດ

ພິກຂຸທັງຫຼາຍ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງກໍຄືກັນສັນນັ້ນ ບໍ່ສະຫຼາດ ໃນໂລກນີ້ ບໍ່ສະຫຼາດໃນໂລກໜ້າ ບໍ່ສະຫຼາດໃນທຳອັນເປັນບ່ອນຢູ່ແຫ່ງມານ[១] ບໍ່ສະຫຼາດໃນທຳອັນບໍ່ເປັນບ່ອນຢູ່ແຫ່ງມານ ບໍ່ສະຫຼາດໃນທຳອັນເປັນບ່ອນຢູ່ແຫ່ງມັດຈຸ ບໍ່ສະຫຼາດໃນທຳອັນບໍ່ເປັນບ່ອນຢູ່ແຫ່ງມັດຈຸ ຊົນເຫຼົ່າໃດເຂົ້າໃຈຄຳເວົ້າຂອງສະມະນະ ຫຼື ພາມເຫຼົ່ານັ້ນວ່າ ເປັນຄຳເວົ້າທີ່ຕົນຄວນຟັງຄວນເຊື່ອ ຄວາມເຂົ້າໃຈຂອງຊົນເຫຼົ່ານັ້ນ ຈັກເປັນໄປເພື່ອສິ່ງທີ່ບໍ່ແມ່ນປະໂຫຍດ ເພື່ອຄວາມທຸກຕະຫຼອດການລະນານ

### ຄົນລ້ຽງງົວຜູ້ສະຫຼາດ

[໓໕໑] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ຄົນລ້ຽງງົວຊາວແຄວ້ນມະຄົດ ເປັນຄົນສະຫຼາດມາແຕ່ກຳເນີດ ໃນສາຣະທະສະໄໝ ເຊິ່ງເປັນເດືອນທ້າຍແຫ່ງລະດູຝົນ ພິຈາລະນາຝັ່ງນີ້

ແລະຝັ່ງນັ້ນແຫ່ງແມ່ນ້ຳຄົງຄາ ຕ້ອນຝູງງົວໃຫ້ຂ້າມໄປສູ່ຝັ່ງເໜືອຂອງຊາວແຄວ້ນວິເທຫະ ສະຖານທີ່ທີ່ເປັນທ່າ ຄົນລ້ຽງງົວນັ້ນ ຕ້ອນເຫຼົ່າງົວທີ່ເປັນຈ່າຝູງເຊິ່ງເປັນຜູ້ນຳຝູງໃຫ້ຂ້າມໄປກ່ອນ ງົວເຫຼົ່ານັ້ນ ລອຍຕັດກະແສແມ່ນ້ຳຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍໂດຍປອດໄພ ຈາກນັ້ນຈຶ່ງຕ້ອນເຫຼົ່າງົວທີ່ມີກຳລັງ ແລະ ງົວທີ່ເຝິກໄວ້ໃຫ້ຂ້າມໄປ ງົວເຫຼົ່ານັ້ນລອຍຕັດກະແສແມ່ນ້ຳຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ ຈາກນັ້ນ ຈຶ່ງຕ້ອນເຫຼົ່າງົວໜຸ່ມສາວໃຫ້ຂ້າມໄປ ງົວເຫຼົ່ານັ້ນລອຍຕັດກະແສແມ່ນ້ຳຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ ຈາກນັ້ນ ຈຶ່ງຕ້ອນເຫຼົ່າລູກງົວທີ່ມີກຳລັງໜ້ອຍໃຫ້ຂ້າມໄປ ງົວເຫຼົ່ານັ້ນ ກໍລອຍຕັດກະແສແມ່ນ້ຳຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ງົວນ້ອຍທີ່ເກີດໃນມື້ນັ້ນລອຍໄປຕາມສຽງງົວທີ່ເປັນແມ່ ແມ່ນງົວນ້ອຍນັ້ນກໍລອຍຕັດກະແສແມ່ນ້ຳຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຄົນລ້ຽງງົວຊາວແຄວ້ນມະຄົດນັ້ນ ເປັນຄົນສະຫຼາດມາແຕ່ກຳເນີດ ໃນສາຣະທະສະໄໝເຊິ່ງເປັນເດືອນທ້າຍແຫ່ງລະດູຝົນ ພິຈາລະນາຝັ່ງນີ້ແລະຝັ່ງນັ້ນແຫ່ງແມ່ນ້ຳຄົງຄາ ຕ້ອນຝູງງົວໃຫ້ຂ້າມໄປສູ່ຝັ່ງເໜືອຂອງຊາວແຄວ້ນວິເທຫະ ສະຖານທີ່ທີ່ແມ່ນທ່າສັນໃດ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງກໍຄືກັນສັນນັ້ນ ສະຫຼາດໃນໂລກນີ້ ສະຫຼາດໃນໂລກໜ້າ ສະຫຼາດໃນເຕພູມມິກະທຳອັນເປັນບ່ອນຢູ່ແຫ່ງມານ ສະຫຼາດໃນທຳອັນບໍ່ເປັນບ່ອນຢູ່ແຫ່ງມານ ສະຫຼາດໃນເຕພູມມິກະທຳອັນເປັນບ່ອນຢູ່ແຫ່ງມັດຈຸ ສະຫຼາດໃນທຳອັນບໍ່ເປັນບ່ອນຢູ່ແຫ່ງມັດຈຸ ຊົນເຫຼົ່າໃດເຂົ້າໃຈຄຳເວົ້າຂອງສະມະນະ ຫຼື ພາມເຫຼົ່ານັ້ນວ່າ ເປັນຄຳເວົ້າທີ່ຕົນຄວນຟັງ ຄວນເຊື່ອ ຄວາມເຂົ້າໃຈຂອງຊົນເຫຼົ່ານັ້ນຈັກເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກຕະຫຼອດການລະນານ

## ຝູງງົວຂ້າມເຖິງຝັ່ງໂດຍປອດໄພ

[໓໕໔] ພິກຂຸທັງຫຼາຍ ເຫຼົ່າງົວຜູ້ທີ່ເປັນຈ່າຝູງ ເປັນຜູ້ນຳຝູງລອຍຕັດກະແສແມ່ນ້ຳ ຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ ແມ່ນສັນໃດ ພິກຂຸທັງຫຼາຍທີ່ເປັນອະຣະຫັນຕະຂີນາສົບກໍສັນນັ້ນ ຄືກັນ ຢູ່ຈົບພົມມະຈັນແລ້ວ[໑] ເຮັດກິດທີ່ຄວນເຮັດສຳເລັດແລ້ວ[໒] ປົງພາລະໄດ້ແລ້ວບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ[໓] ລຸດພົ້ນຍ້ອນຮູ້ໂດຍຊອບ ກໍຊື່ວ່າລອຍຕັດກະແສມານຂ້າມໄປເຖິງຝັ່ງໄດ້ໂດຍໂດຍປອດໄພ

ເຫຼົ່າງົວທີ່ມີກຳລັງ ແລະ ງົວທີ່ເຝິກໄວ້ລອຍຕັດກະແສແມ່ນ້ຳຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍໂດຍປອດໄພ ແມ່ນສັນໃດ ພິກຂຸທັງຫຼາ ຍທີ່ເປັນໂອປະປາຕິກະ ກໍຄືກັນສັນນັ້ນ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປຈຶ່ງປະຣິນິບພານໃນພົມໂລກນັ້ນ ບໍ່ຕ້ອງກັບມາຈາກໂລກນັ້ນອີກ ກໍຊື່ວ່າ ລອຍຕັດກະແສມານຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ

ເຫຼົ່າງົວໜຸ່ມ ແລະ ງົວສາວລອຍຕັດກະແສແມ່ນ້ຳຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍໂດຍ

ປອດໄພ ແມ່ນສັນໃດ ພິກຂຸທັງຫຼາຍທີ່ເປັນສະກະທາຄາມີ ກໍຄືກັນສັນນັ້ນ ຍ້ອນສັງໂຍດ ໓ ປະການສິ້ນໄປ (ແລະ) ຍ້ອນຣາຄະ ໂທສະ ໂມຫະເບົາບາງ ຈຶ່ງກັບມາສູ່ໂລກນີ້ອີກ ຄັ້ງດຽວ ກໍຈະເຮັດທີ່ສຸດແຫ່ງທຸກໄດ້ ກໍຊື່ວ່າ ລອຍຕັດກະແສມານຂ້າມໄປເຖິງຝັ່ງໄດ້ໂດຍໂດຍປອດໄພ

ເຫຼົ່າງົວນ້ອຍທີ່ມີກຳລັງໜ້ອຍ ລອຍຕັດກະແສແມ່ນ້ຳຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ ແມ່ນສັນໃດ ພິກຂຸທັງຫຼາຍ ທີ່ເປັນໂສດາບັນ[១] ກໍຄືກັນສັນນັ້ນ ຍ້ອນສັງໂຍດ[໒] ໓ ປະການສິ້ນໄປ ຈຶ່ງບໍ່ມີທາງຕົກຕ່ຳ[໓] ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິ[໔] ໃນວັນຂ້າງໜ້າ ກໍຊື່ວ່າລອຍຕັດກະແສມານຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ

ງົວນ້ອຍທີ່ເກີດໃນວັນນັ້ນ ລອຍໄປຕາມສຽງງົວທີ່ເປັນແມ່ ລອຍຕັດກະແສແມ່ນ້ຳຄົງຄາຂ້າມໄປເຖິງຝັ່ງໄດ້ໂດຍໂດຍປອດໄພ ແມ່ນສັນໃດ ພິກຂຸທັງຫຼາຍກໍຄືກັນສັນນັ້ນ ທີ່ເປັນທຳມານຸດາຣີ[໕] ແລະທີ່ເປັນສັດທານຸສາຣີ[໖] ກໍຊື່ວ່າ ຈັກລອຍຕັດກະແສມານຂ້າມໄປເຖິງຝັ່ງໄດ້ໂດຍປອດໄພ

ພິກຂຸທັງຫຼາຍ ເຮົາແລ ເປັນຜູ້ສະຫຼາດໃນໂລກນີ້ ສະຫຼາດໃນໂລກໜ້າ ສະຫຼາດໃນເຕພູມມີກະທຳອັນເປັນບ່ອນຢູ່ແຫ່ງມານ ສະຫຼາດໃນທຳອັນບໍ່ເປັນບ່ອນຢູ່ແຫ່ງມານ ສະຫຼາດໃນເຕພູມມີກະທຳອັນເປັນບ່ອນຢູ່ແຫ່ງມັດຈຸ ສະຫຼາດໃນທຳອັນບໍ່ເປັນບ່ອນຢູ່ແຫ່ງມັດຈຸ ຊົນເຫຼົ່າໃດຈັກເຂົ້າໃຈຄຳເວົ້າຂອງເຮົານັ້ນວ່າ ເປັນຄຳເວົ້າທີ່ຕົນຄວນຟັງ ຄວນເຊື່ອ ຄວາມເຂົ້າໃຈຂອງຊົນເຫຼົ່ານັ້ນຈັກເປັນໄປເພື່ອປະໂຫຍດ ເພື່ອຄວາມສຸກຕະຫຼອດການລະນານ"

ພຣະຜູ້ມີພຣະພາກເຈົ້າຜູ້ພຣະສຸຄົດສາດສະດາ ເມື່ອຕັດເວີຍຍາກະຣະນະພາສິດນີ້ແລ້ວຈຶ່ງຕັດຄາຖາປະພັນຕໍ່ໄປອີກ ວ່າ

"ໂລກນີ້ແລະໂລກໜ້າຕະຖາຄົດຜູ້ຮູ້ໄດ້ປະກາດໄວ້ດີແລ້ວ
ຕະຖາຄົດຜູ້ຕັດສະຣູ້ເອງ ຮູ້ແຈ້ງໂລກທັງປວງທັງທີ່ມານໄປເຖິງໄດ້
ແລະທີ່ມັດຈຸຣາດໄປເຖິງບໍ່ໄດ້ ດ້ວຍຄວາມຮູ້ຍິ່ງ
ຈຶ່ງໄດ້ໄຂປະຕູແຫ່ງອະມະຕະ[១]
ເພື່ອໃຫ້ເຖິງນິບພານອັນເປັນແດນກະເສມ
ກະແສແຫ່ງມານຜູ້ມີໃຈບາບຕະຖາຄົດຕັດໄດ້ແລ້ວ
ກຳຈັດໄດ້ແລ້ວ ກຳຣາບໄດ້ແລ້ວ
ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເປັນຜູ້ຫຼາຍດ້ວຍຄວາມປາໂມດ
ປາຖະໜາທຳອັນເປັນແດນກະເສມ[໒]ຢູ່ເທີ້ນ"

**ຈູລະໂຄປາລະສູດທີ່ ໔ ຈົບ**

# ໕. ຈູລະສັດຈະກະສູດ

## ວ່າດ້ວຍສັດຈະກະນິຄົນຖະບຸດ ສູດນ້ອຍ

## ອະນຸດາສະນີຂອງພຣະພຸດທະເຈົ້າ

[໓໕໓] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ກູຕາຄາຣະສາລາປ່າມະຫາວັນ ເຂດນະຄອນເວສາລີ ໃນສະໄໝນັ້ນ ສັດຈະກະນິຄົນຖະບຸດອາໄສຢູ່ໃນນະຄອນເວສາລີ ເປັນນັກໂຕ້ວາທະ ເວົ້າຍົກຕົນວ່າເປັນບັນດິດ ຊົນຈຳນວນຫຼາຍຍ້ອງຍໍວ່າເປັນຜູ້ມີລັດທິດີ ເຂົາກ່າວປາໄສໃນບ່ອນຊຸມຊົນໃນນະຄອນເວສາລີແບບນີ້ ວ່າ

"ສະມະນະຫຼືພາມຜູ້ເປັນເຈົ້າໝູ່ ເຈົ້າຄະນະ ເປັນຄະນາຈານ ຜູ້ປະຕິຍານຕົນວ່າເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ເມື່ອໂຕ້ຕອບວາທະກັບເຮົາ ແລ້ວຈຶ່ງຈະບໍ່ຕົກຊະເງີ້ ບໍ່ສະທົກສະທ້ານ ບໍ່ຫວັ່ນໄຫວ ບໍ່ມີເຫື່ອໄຫຼຈາກຂີ້ແຮ້ ເຮົາບໍ່ເຫັນເລີຍແມ່ນແຕ່ຄົນດຽວ ຫາກເຮົາໂຕ້ຕອບວາທະກັບຕົ້ນເສົາທີ່ບໍ່ມີຈິດໃຈ ແມ່ນຕົ້ນເສົານັ້ນ ເມື່ອໂຕ້ຕອບວາທະກັບເຮົາ ກໍຕ້ອງຕົກຊະເງີ້ ສະທົກສະທ້ານ ຫວັ່ນໄຫວ ບໍ່ຈຳເປັນຕ້ອງເວົ້າຮອດມະນຸດເລີຍ"

ເມື່ອໃນເວລາເຊົ້າ ທ່ານພຣະອັດສະຊິຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປບິນທະບາດໃນກຣຸງເວສາລີ ສັດຈະກະ ນິຄົນຖະບຸດຍ່າງທ່ຽວຫຼິ້ນຢູ່ໃນນະຄອນເວສາລີໄດ້ເຫັນທ່ານພຣະອັດສະຊິຍ່າງຢູ່ແຕ່ໄກ ຈຶ່ງເຂົ້າໄປຫາ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວຢືນຢູ່ທີ່ສົມຄວນ ໄດ້ຖາມວ່າ "ທ່ານພຣະອັດສະຊິ ພຣະສະມະນະໂຄດົມແນະນຳພວກສາວົກຢ່າງໃດ ແລະ ຄຳສັ່ງສອນຂອງພຣະສະມະນະໂຄດົມທີ່ເປັນໄປໃນພວກສາວົກໂດຍສ່ວນຫຼາຍເປັນແນວໃດ?"

ທ່ານພຣະອັດສະຊິຕອບວ່າ "ອັກຄິເວດສະນະ ພຣະຜູ້ມີພຣະພາກເຈົ້າຊົງແນະນຳສາວົກທັງຫຼາຍຢ່າງນີ້ ແລະ ຄຳສັ່ງສອນຂອງພຣະຜູ້ມີພຣະພາກເຈົ້າທີ່ເປັນໄປໃນສາວົກທັງຫຼາຍໂດຍສ່ວນຫຼາຍເປັນແນວນີ້ວ່າ "ຮູບບໍ່ທ່ຽງ ເວທະນາບໍ່ທ່ຽງ ສັນຍາບໍ່ທ່ຽງ ສັງຂານທັງຫຼາຍບໍ່ທ່ຽງ ວິນຍານບໍ່ທ່ຽງ ຮູບບໍ່ແມ່ນອັດຕາ ເວທະນາບໍ່ແມ່ນອັດຕາ ສັນຍາບໍ່ແມ່ນອັດຕາ ສັງຂານທັງຫຼາຍບໍ່ແມ່ນອັດຕາ ວິນຍານບໍ່ແມ່ນອັດຕາ ສັງຂານທັງຫຼາຍທັງປວງບໍ່ແມ່ນອັດຕາ ທຳທັງຫຼາຍທັງປວງບໍ່ແມ່ນອັດຕາ" ພຣະຜູ້ມີພຣະພາກເຈົ້າ ຊົງແນະນຳສາວົກທັງຫຼາຍແນວນີ້ ແລະ ຄຳສັ່ງສອນຂອງພຣະຜູ້ມີພຣະພາກເຈົ້າທີ່ເປັນໄປໃນສາວົກທັງຫຼາຍ ໂດຍສ່ວນຫຼາຍເປັນແນວນີ້"

ສັດຈະກະ ນິຄົນຖະບຸດກ່າວວ່າ "ທ່ານພຣະອັດສະຊິ ຂ້າພະເຈົ້າໄດ້ຟັງວ່າພຣະສະມະນະໂຄດົມ ມີວາທະແນວນີ້ ຊື່ວ່າ ຟັງເລື່ອງທີ່ຜິດ ເຮັດແນວໃດ ຂ້າພະເຈົ້າຈຶ່ງຈະພົບພຣະສະມະນະໂຄດົມນັ້ນ ແລະ ສົນທະນາກັນຈັກເທື່ອໜຶ່ງ ເຮັດແນວໃດ ຂ້າພະເຈົ້າຈຶ່ງຈະປົດເປື້ອງພຣະສະມະນະໂຄດົມຈາກທິດຖິຊົ່ວນັ້ນໄດ້"

## ສັດຈະກະ ນິຄົນຖະບຸດຊວນເຈົ້າລິດສະຫວີໄປຟັງການໂຕ້ວາທະ

[໓໕໔] ສະໄໝນັ້ນ ເຈົ້າລິດສະຫວີປະມານ ໕໐໐ ພຣະອົງ ຊົງປະຊຸມກັນຢູ່ໃນຫໍປະຊຸມດ້ວຍວຽກງານບາງຢ່າງ ຄັ້ງນັ້ນ ສັດຈະກະນິຄົນຖະບຸດ ເຂົ້າໄປຫາເຈົ້າລິດສະຫວີເຫຼົ່ານັ້ນ ແລ້ວໄດ້ກ່າວກັບເຈົ້າລິດສະຫວີເຫຼົ່ານັ້ນແນວນີ້ ວ່າ

"ຂໍເຈົ້າລິດສະຫວີທັງຫຼາຍ ຈົ່ງໄປນຳກັນ ຂໍເຈົ້າລິດສະຫວີທັງຫຼາຍ ຈົ່ງໄປນຳກັນມື້ນີ້ຂ້າພະເຈົ້າຈັກສົນທະນາກັບພຣະສະມະນະໂຄດົມ ຖ້າພຣະສະມະນະໂຄດົມຈັກຢັ້ງຢືນຕາມຄຳທີ່ພຣະອັດສະຊິເຊິ່ງເປັນພຣະສາວົກອົງໜຶ່ງທີ່ມີຊື່ສຽງຢັ້ງຢືນແລ້ວແກ່ຂ້າພະເຈົ້າ ຂ້າພະເຈົ້າຈັກຈັບກຸມດຶງທຶ້ນລາກພຣະສະມະນະໂຄດົມໄປມາດ້ວຍຄຳຕໍ່ຄຳ ໃຫ້ເປັນເໝືອນບຸຣຸດຜູ້ມີກຳລັງຈັບແກະມີຂົນຍາວທີ່ຂົນແລ້ວຈັບກຸມດຶງທຶ້ນລາກໄປມາສັນນັ້ນ ຫຼື ໃຫ້ເປັນເໝືອນຄົນງານໃນໂຮງສຸຣາເຊິ່ງກຳລັງວາງສາດສຳລັບຮອງແປ້ງສຸຣາຜືນໃຫຍ່ໃນແມ່ນ້ຳເລິກ ແລ້ວຈັບທີ່ແຈລາກຟາດໄປຟາດມາສັນນັ້ນ ຂ້າພະເຈົ້າຈັກສະບັດຟັດຟາດພຣະສະມະນະໂຄດົມດ້ວຍຄຳຕໍ່ຄຳໃຫ້ເປັນເໝືອນບຸຣຸດຜູ້ມີກຳລັງເຊິ່ງເປັນນັກເລງ ຈັບຖ້ວຍທີ່ຫູແລ້ວສະບັດຟັດຟາດໄປມາສັນນັ້ນ ຂ້າພະເຈົ້າຈັກຫຼິ້ນງານພຣະສະມະນະໂຄດົມເໝືອນນັກກິລາຫຼິ້ນກິລາດຶງເຊືອກປໍປ່ານ ໃຫ້ເປັນເໝືອນ ຊ້າງທີ່ມີໄວລ່ວງ ໒໐ ປີ ລົງສູ່ສະໂບກຂະຣະນີທີ່ມີນ້ຳເລິກ ແລ້ວຫຼິ້ນກິລາດຶງເຊືອກປໍປ່ານສັນນັ້ນ ຂໍເຈົ້າລິດສະຫວີທັງຫຼາຍຈົ່ງໄປນຳກັນ ຂໍເຈົ້າລິດສະຫວີທັງຫຼາຍຈົ່ງໄປນຳກັນ ມື້ນີ້ ຂ້າພະເຈົ້າຈັກສົນທະນາກັບພຣະສະມະນະໂຄດົມ"

ບັນດາເຈົ້າລິດສະຫວີເຫຼົ່ານັ້ນ ລາງພວກກ່າວແນວນີ້ວ່າ "ພຣະສະມະນະໂຄດົມຈັກກ່າວແຍ້ງຄຳເວົ້າຂອງທ່ານສັດຈະກະໄດ້ແນວໃດ? ແທ້ທີ່ຈິງ ທ່ານສັດຈະກະຈະກ່າວແຍ້ງຄຳເວົ້າຂອງພຣະສະມະນະໂຄດົມ"

ລາງພວກກ່າວແນວນີ້ວ່າ "ທ່ານສັດຈະກະເປັນໃຜ ຈຶ່ງກ່າວແຍ້ງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າໄດ້ ແທ້ທີ່ຈິງ ພຣະຜູ້ມີພຣະພາກເຈົ້າຈະຊົງເປັນຜູ້ກ່າວແຍ້ງຄຳເວົ້າຂອງທ່ານສັດຈະກະ"

ຄັ້ງນັ້ນ ສັດຈະກະ ນິຄົນຖະບຸດມີເຈົ້າລິດສະຫວີປະມານ ໕໐໐ ພຣະອົງຫ້ອມລ້ອມໄດ້ເຂົ້າໄປສູ່ກູຕາຄາຣະສາລາປ່າມະຫາວັນ

[໓໕໔] ສະໄໝນັ້ນ ພິກຂຸຈຳນວນຫຼາຍກຳລັງຈົງກົມຢູ່ກາງແຈ້ງ ຄັ້ງນັ້ນ ສັດຈະກະນິຄົນຖະບຸດເຂົ້າໄປຫາພິກຂຸເຫຼົ່ານັ້ນເຖິງທີ່ຈົງກົມແລ້ວຖາມວ່າ "ທ່ານຜູ້ຈະເລີນ ບັດນີ້ ພຣະສະມະນະໂຄດົມຢູ່ໃສ ພວກຂ້າພະເຈົ້າປາຖະໜາຈະພົບພຣະສະມະນະໂຄດົມພຣະອົງນັ້ນ"

ພິກຂຸເຫຼົ່ານັ້ນ ຈຶ່ງຕອບວ່າ "ອັກຄິເວດສະນະ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນສະເດັດເຂົ້າໄປສູ່ປ່າມະຫາວັນ ປະທັບພັກກາງເວັນຢູ່ທີ່ໂຄນຕົ້ນໄມ້ແຫ່ງໜຶ່ງ"

ລຳດັບນັ້ນ ສັດຈະກະ ນິຄົນຖະບຸດພ້ອມດ້ວຍເຈົ້າລິດສະຫວີຈຳນວນຫຼາຍເຂົ້າໄປສູ່ປ່າມະຫາວັນ ເຖິງທີ່ທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ແລ້ວທູນສົນທະນາປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວຈຶ່ງນັ່ງໃນທີ່ສົມຄວນ ແມ່ນເຈົ້າລິດສະຫວີເຫຼົ່ານັ້ນ ລາງພວກຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ລາງພວກທູນປາໄສແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະນົມມືແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະກາດຊື່ແລະໂຄດຂອງຕົນ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວນັ່ງນັ່ງຢູ່ບ່ອນທີ່ສົມຄວນ ລາງພວກກໍນັ່ງມິດຢູ່ບ່ອນທີ່ສົມຄວນ

## ບັນຫາຂອງສັດຈະກະ ນິຄົນຖະບຸດ

[໓໕໕] ສັດຈະກະ ນິຄົນຖະບຸດເມື່ອນັ່ງແລ້ວໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າພະເຈົ້າຂໍຖາມທ່ານພຣະໂຄດົມຈັກນ້ອຍໜຶ່ງ ຖ້າທ່ານພຣະໂຄດົມຈະເປີດໂອກາດທີ່ຈະຕອບບັນຫາແກ່ຂ້າພະເຈົ້າ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອັກຄິເວດສະນະ ທ່ານປະສົງຈະຖາມບັນຫາໃນຂໍໃດ? ກໍຈົ່ງຖາມມາເທີ້ນ"

"ທ່ານພຣະໂຄດົມແນະນຳພວກສາວົກຢ່າງໃດ ຄຳສັ່ງສອນຂອງທ່ານພຣະໂຄດົມທີ່ເປັນໄປໃນພຣະສາວົກທັງຫຼາຍ ໂດຍສ່ວນຫຼາຍເປັນແນວໃດ?"

"ເຮົາແນະນຳສາວົກທັງຫຼາຍຢ່າງນີ້ ແລະ ຄຳສັ່ງສອນຂອງເຮົາທີ່ເປັນໄປໃນສາວົກທັງຫຼາຍ ໂດຍສ່ວນຫຼາຍເປັນແນວນີ້ວ່າ "ຮູບບໍ່ທ່ຽງ ເວທະນາບໍ່ທ່ຽງ ສັນຍາບໍ່ທ່ຽງ ສັງຂານທັງຫຼາຍບໍ່ທ່ຽງ ວິນຍານບໍ່ທ່ຽງ ຮູບບໍ່ແມ່ນອັດຕາ ເວທະນາບໍ່ແມ່ນອັດຕາ ສັນຍາບໍ່ແມ່ນອັດຕາ ສັງຂານທັງຫຼາຍບໍ່ແມ່ນອັດຕາ ວິນຍານບໍ່ແມ່ນອັດຕາ ສັງຂານທັງຫຼາຍທັງປວງບໍ່ແມ່ນອັດຕາ ທຳທັງຫຼາຍທັງປວງບໍ່ແມ່ນອັດຕາ" ເຮົາແນະນຳສາວົກທັງຫຼາຍຢ່າງນີ້ ແລະ ຄຳສັ່ງສອນຂອງເຮົາທີ່ເປັນໄປໃນສາວົກທັງຫຼາຍໂດຍສ່ວນຫຼາຍເປັນຢ່າງນີ້"

"ທ່ານພຣະໂຄດົມ ຂໍໃຫ້ຂ້າພະເຈົ້າສະແດງອຸປະມາຖວາຍ"

"ຂໍເຊີນ ທ່ານສະແດງອຸປະມາເທີ້ນ"

"ທ່ານພຣະໂຄດົມ ພືດພັນໄມ້ເຫຼົ່າໃດເຫຼົ່າໜຶ່ງທີ່ເຖິງຄວາມຈະເລີນງອກງາມໄພບູນ ພືດພັນໄມ້ເຫຼົ່ານັ້ນທັງໝົດ ຕ້ອງອາໄສແຜ່ນດິນ ຢູ່ໃນແຜ່ນດິນ ຈຶ່ງເຖິງຄວາມຈະເລີນງອກງາມໄພບູນໄດ້ ຫຼື ການງານແນວໃດແນວໜຶ່ງທີ່ບຸກຄົນຕ້ອງເຮັດດ້ວຍກຳລັງ ການງານເຫຼົ່ານັ້ນທັງໝົດບຸກຄົນຕ້ອງອາໄສແຜ່ນດິນ ຕ້ອງຢູ່ເທິງແຜ່ນດິນຈຶ່ງເຮັດໄດ້ ແມ່ນສັນໃດ ບຸຣຸດບຸກຄົນນີ້ກໍຄືກັນສັນນັ້ນ ມີຮູບເປັນອັດຕາ ມີເວທະນາເປັນອັດຕາ ມີສັນຍາເປັນອັດຕາ ມີສັງຂານເປັນອັດຕາ ມີວິນຍານເປັນອັດຕາ ຕ້ອງດຳລົງຢູ່ໃນຮູບ ເວທະນາ ສັນຍາ ສັງຂານ ວິນຍານ ຈຶ່ງຈະປະສົບບຸນຫຼືບາບໄດ້"

"ອັກຄິເວດສະນະ ທ່ານກ່າວແນວນີ້ວ່າ "ຮູບເປັນອັດຕາຂອງເຮົາ ເວທະນາເປັນອັດຕາຂອງເຮົາ ສັນຍາເປັນອັດຕາຂອງເຮົາ ສັງຂານທັງຫຼາຍເປັນອັດຕາຂອງເຮົາ ວິນຍານເປັນອັດຕາຂອງເຮົາບໍ່ແມ່ນບໍ?"

"ທ່ານພຣະໂຄດົມ ຂ້າພະເຈົ້າກ່າວແນວນັ້ນຈິງ ແລະ ໝູ່ຊົນເປັນຈຳນວນຫຼາຍກໍກ່າວແນວນັ້ນວ່າ "ຮູບເປັນອັດຕາຂອງເຮົາ ເວທະນາເປັນອັດຕາຂອງເຮົາ ສັນຍາເປັນອັດຕາຂອງເຮົາ ສັງຂານທັງຫຼາຍເປັນອັດຕາຂອງເຮົາ ວິນຍານເປັນອັດຕາຂອງເຮົາບໍ່ແມ່ນບໍ?"

"ອັກຄິເວດສະນະ ໝູ່ຊົນເປັນຈຳນວນຫຼາຍ ຈັກຊ່ອຍອັນໃດທ່ານໄດ້ ເຊີນທ່ານຢັ້ງຢືນຄຳຂອງທ່ານເທີ້ນ"

"ທ່ານພຣະໂຄດົມ ເປັນຄວາມຈິງ ຂ້າພະເຈົ້າກ່າວແນວນີ້ວ່າ "ຮູບເປັນອັດຕາຂອງເຮົາ ເວທະນາເປັນອັດຕາຂອງເຮົາ ສັນຍາເປັນອັດຕາຂອງເຮົາ ສັງຂານທັງຫຼາຍເປັນອັດຕາຂອງເຮົາ ວິນຍານເປັນອັດຕາຂອງເຮົາ"

## ຊົງຍ້ອນຖາມສັດຈະກະ ນິຄົນຖະບຸດດ້ວຍອຸປະມາ

[๓๕๗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັກຄິເວດສະນະ ຖ້າເປັນແນວນັ້ນ ເຮົາຈັກສອບຖາມທ່ານໃນຂໍ້ນີ້ແລ ທ່ານເຫັນຄວນຢ່າງໃດ ທ່ານຄວນຕອບຢ່າງນັ້ນ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ ພຣະຣາຊາມະຫາກະສັດຜູ້ໄດ້ຮັບມູນທາພິເສກແລ້ວ ເຊັ່ນພຣະເຈົ້າປະເສນທິໂກສົນ ຫຼືພຣະເຈົ້າອະຊາດສັດຕູ ເວເທຫິບຸດແຫ່ງແຄວ້ນມະຄົດ ມີອຳນາດທີ່ຈະຂ້າຄົນທີ່ຄວນຂ້າ ຍຶດສົມບັດຄົນທີ່ຄວນຍຶດ ເນຣະເທດຄົນທີ່ຄວນເນຣະເທດ ໃນພຣະຣາຊະອານາເຂດຂອງພຣະອົງບໍ່ແມ່ນບໍ?"

ສັດຈະກະ ນິຄົນຖະບຸດຂາບທູນວ່າ "ທ່ານພຣະໂຄດົມ ພຣະຣາຊາມະຫາກະສັດຜູ້ໄດ້ຮັບ

ມູນທາພິເສກແລ້ວ ເຊັ່ນພຣະເຈົ້າປະເສນທິໂກສົນ ຫຼື ພຣະເຈົ້າອະຊາດສັດຕູ ເວເທຫິບຸດແຫ່ງແຄວ້ນມະຄົດ ມີອຳນາດທີ່ຈະຂ້າຄົນທີ່ຄວນຂ້າ ຍຶດສົມບັດຄົນທີ່ຄວນຍຶດ ເນຣະເທດຄົນທີ່ຄວນເນຣະເທດ ໃນພຣະຣາຊະອານາເຂດຂອງພຣະອົງ ແມ່ນແຕ່ຄະນະຜູ້ປົກຄອງເຫຼົ່ານີ້ ຄື ເຈົ້າວັດຊີ ເຈົ້າມັລລະກໍມີອຳນາດທີ່ຈະຂ້າຄົນທີ່ຄວນຂ້າ ຍຶດສົມບັດຄົນທີ່ຄວນຍຶດ ເນຣະເທດຄົນທີ່ຄວນເນຣະເທດ ໃນພຣະຣາຊະອານາເຂດຂອງພຣະອົງ ເປັນຫຍັງ ພຣະຣາຊາມະຫາກະສັດຜູ້ໄດ້ຮັບມູນທາພິເສກແລ້ວ ເຊັ່ນພຣະເຈົ້າປະເສນທິໂກສົນ ຫຼື ພຣະເຈົ້າອະຊາດສັດຕູ ເວເທຫິບຸດແຫ່ງແຄວ້ນມະຄົດຈະບໍ່ມີອຳນາດບໍ ພຣະຣາຊາມະຫາກະສັດຜູ້ໄດ້ຮັບມູນທາພິເສກແລ້ວນັ້ນ ຕ້ອງມີອຳນາດແນ່ນອນ ແລະ ຄວນຈະມີອຳນາດ"

"ອັກຄິເວດສະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ ຂໍ້ທີ່ທ່ານກ່າວແນວນີ້ວ່າ "ຮູບເປັນອັດຕາຂອງເຮົາ" ນັ້ນ ທ່ານມີອຳນາດໃນຮູບນັ້ນວ່າ "ຮູບຂອງເຮົາຈົ່ງເປັນແນວນັ້ນເທີ້ນ ຢ່າໄດ້ເປັນຢ່າງນີ້ເລີຍ ໄດ້ແມ່ນບໍ?"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມຢ່າງນີ້ແລ້ວ ສັດຈະກະ ນິຄົນຖະບຸດກໍມິດຢູ່

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບສັດຈະກະ ນິຄົນຖະບຸດເປັນເທື່ອທີ ໒ ວ່າ "ອັກຄິເວດສະນະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າຢ່າງໃດ? ຂໍ້ທີ່ທ່ານກ່າວວ່າ "ຮູບເປັນອັດຕາຂອງເຮົາ" ນັ້ນ ທ່ານມີອຳນາດໃນຮູບນັ້ນວ່າ "ຮູບຂອງເຮົາຈົ່ງເປັນແນວນັ້ນເທີ້ນ ຢ່າໄດ້ເປັນຢ່າງນີ້ເລີຍ" ໄດ້ແມ່ນບໍ?"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມຢ່າງນີ້ແລ້ວ ສັດຈະກະນິຄົນຖະບຸດ ກໍໄດ້ມິດເປັນເທື່ອທີ ໒

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດກັບສັດຈະກະນິຄົນຖະບຸດວ່າ "ອັກຄິເວດສະນະບັດນີ້ ທ່ານຈົ່ງຕອບ ບໍ່ແມ່ນເວລາທີ່ທ່ານຈະມິດຢູ່ ຜູ້ໃດຖືກຕະຖາຄົດຖາມບັນຫາທີ່ສົມຄວນແກ່ເຫດເຖິງ ໓ ຄັ້ງແລ້ວບໍ່ຕອບ ຫົວຂອງຜູ້ນັ້ນຈະແຕກເປັນ ໗ ສ່ຽງໃນບ່ອນນັ້ນ"

ຂະນະນັ້ນ ຍັກວະຊິຣະປານີ ຖືກະບອງເພັດມີໄຟລຸກຮຸ່ງເປັນແປວຢືນຢູ່ເທິງອາກາດຊື່ຫົວຂອງສັດຈະກະນິຄົນຖະບຸດ ຄິດວ່າ "ຫາກສັດຈະກະນິຄົນຖະບຸດຜູ້ນີ້ ເມື່ອຖືກພຣະຜູ້ມີພຣະພາກເຈົ້າຕັດຖາມບັນຫາອັນຊອບທຳເຖິງ ໓ ຄັ້ງແລ້ວ ແຕ່ບໍ່ຍອມຕອບ ເຮົາຈະທຸບຫົວຂອງເຂົາໃຫ້ແຕກເປັນ ໗ ສ່ຽງ ໃນນີ້ແລ"

ມີແຕ່ພຣະຜູ້ມີພຣະພາກເຈົ້າ ກັບສັດຈະກະນິຄົນຖະບຸດທີ່ນັ້ນ ທີ່ແນມເຫັນຍັກວະຊິຣະປານີຕົນນັ້ນ ໃນທັນໃດນັ້ນ ສັດຈະກະນິຄົນຖະບຸດຕົກໃຈຢ້ານຈົນຂົນຫົວລຸກ ຕ້ອງການພຣະຜູ້

ມີພຣະພາກເຈົ້າໃຫ້ເປັນທີ່ຕ້ານທານ ເປັນທີ່ປ້ອງກັນ ເປັນທີ່ເພິ່ງ ໄດ້ຂາບທູນວ່າ "ພຣະໂຄດົມຜູ້ຈະເລີນ ຂໍຈົ່ງຊົງຖາມມາເທີ້ນ ຂ້າພະເຈົ້າຈະຕອບ"

## ຫຼັກໄຕຣລັກ

[໓໕໘] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັກຄິເວດສະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ? ຂໍ້ທີ່ທ່ານກ່າວແນວນີ້ວ່າ "ຮູບເປັນອັດຕາຂອງເຮົາ" ທ່ານມີອຳນາດໃນຮູບນັ້ນວ່າ "ຮູບຂອງເຮົາຈົ່ງເປັນແນວນັ້ນເທີ້ນ ຢ່າໄດ້ເປັນແນວນີ້ເລີຍ ໄດ້ແມ່ນບໍ?"

ສັດຈະກະ ນິຄັນຖະບຸດທູນຕອບວ່າ "ຂໍ້ນີ້ບໍ່ໄດ້ເປັນດັ່ງນັ້ນ ພຣະໂຄດົມຜູ້ຈະເລີນ"

"ທ່ານຈົ່ງມະນະສິການ໌ເທີ້ນ ເມື່ອມະນະສິການແລ້ວຈຶ່ງຕອບ ຍ້ອນຄຳຫຼັງກັບຄຳກ່ອນ ຫຼືຄຳກ່ອນກັບຄຳຫຼັງຂອງທ່ານບໍ່ກົງກັນ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຂໍ້ທີ່ທ່ານກ່າວແນວນີ້ວ່າ "ເວທະນາເປັນອັດຕາຂອງເຮົາ" ທ່ານມີອຳນາດໃນເວທະນານັ້ນວ່າ "ເວທະນາຂອງເຮົາຈົ່ງເປັນແນວນັ້ນເທີ້ນ ຢ່າໄດ້ເປັນແນວນີ້ເລີຍ ໄດ້ແມ່ນບໍ?"

"ຂໍ້ນີ້ບໍ່ໄດ້ເປັນດັ່ງນັ້ນ ພຣະໂຄດົມຜູ້ຈະເລີນ"

"ທ່ານຈົ່ງມະນະສິການເທີ້ນ ເມື່ອມະນະສິການແລ້ວຈຶ່ງຕອບ ຍ້ອນຄຳຫຼັງກັບຄຳກ່ອນ ຫຼືຄຳກ່ອນກັບຄຳຫຼັງຂອງທ່ານບໍ່ກົງກັນ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ຂໍ້ທີ່ທ່ານກ່າວແນວນີ້ວ່າ "ສັນຍາເປັນອັດຕາຂອງເຮົາ" ທ່ານມີອຳນາດໃນສັນຍານັ້ນວ່າ "ສັນຍາຂອງເຮົາຈົ່ງເປັນແນວນັ້ນເທີ້ນ ຢ່າໄດ້ເປັນແນວນີ້ເລີຍ ໄດ້ແມ່ນບໍ?"

"ຂໍ້ນີ້ບໍ່ໄດ້ເປັນດັ່ງນັ້ນ ພຣະໂຄດົມຜູ້ຈະເລີນ"

"ທ່ານຈົ່ງມະນະສິການເທີ້ນ ເມື່ອມະນະສິການແລ້ວຈຶ່ງຕອບ ຍ້ອນຄຳຫຼັງກັບຄຳກ່ອນ ຫຼືຄຳກ່ອນກັບຄຳຫຼັງຂອງທ່ານບໍ່ກົງກັນ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຂໍ້ທີ່ທ່ານກ່າວແນວນີ້ວ່າ "ສັງຂານທັງຫຼາຍເປັນອັດຕາຂອງເຮົາ" ທ່ານມີອຳນາດໃນສັງຂານທັງຫຼາຍເຫຼົ່ານັ້ນວ່າ "ສັງຂານທັງຫຼາຍຂອງເຮົາຈົ່ງເປັນແນວນັ້ນເທີ້ນ ຢ່າໄດ້ເປັນແນວນີ້ເລີຍ ໄດ້ແມ່ນບໍ?"

"ຂໍ້ນີ້ບໍ່ໄດ້ເປັນດັ່ງນັ້ນ ພຣະໂຄດົມຜູ້ຈະເລີນ"

"ທ່ານຈົ່ງມະນະສິການເທີ້ນ ເມື່ອມະນະສິການແລ້ວຈຶ່ງຕອບ ຍ້ອນຄຳຫຼັງກັບຄຳກ່ອນ ຫຼືຄຳກ່ອນກັບຄຳຫຼັງຂອງທ່ານບໍ່ກົງກັນ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຂໍ້ທີ່ທ່ານກ່າວແນວນີ້ວ່າ "ວິນຍານເປັນອັດຕາຂອງເຮົາ" ທ່ານມີອຳນາດໃນວິນຍານນັ້ນວ່າ "ວິນຍານຂອງເຮົາຈົ່ງເປັນແນວນັ້ນເທີ້ນ ຢ່າໄດ້ເປັນແນວນີ້ເລີຍ ໄດ້ແມ່ນບໍ?"

"ຂໍ້ນີ້ບໍ່ໄດ້ເປັນດັ່ງນັ້ນ ພຣະໂຄດົມຜູ້ຈະເລີນ"

"ທ່ານຈົ່ງມະນະສິການເທີ້ນ ເມື່ອມະນະສິການແລ້ວຈຶ່ງຕອບ ຍ້ອນຄຳຫຼັງກັບຄຳກ່ອນ ຫຼື ຄຳກ່ອນກັບຄຳຫຼັງຂອງທ່ານບໍ່ກົງກັນ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ ຮູບທ່ຽງຫຼືບໍ່ທ່ຽງ?"

"ບໍ່ທ່ຽງ ພຣະໂຄດົມຜູ້ຈະເລີນ"
"ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ?"
"ເປັນທຸກ ພຣະໂຄດົມຜູ້ຈະເລີນ"

"ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມແປຜັນໄປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ"

"ຂໍ້ນັ້ນບໍ່ຄວນເລີຍ ພຣະໂຄດົມຜູ້ຈະເລີນ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເວທະນາ ຯລຯ ສັນຍາ ຯລຯ ສັງຂານທັງຫຼາຍ ຯລຯ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ວິນຍານ ທ່ຽງ ຫຼືບໍ່ທ່ຽງ"

"ບໍ່ທ່ຽງ ພຣະໂຄດົມຜູ້ຈະເລີນ"
"ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼືເປັນສຸກ"
"ເປັນທຸກ ພຣະໂຄດົມຜູ້ຈະເລີນ"

"ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມແປຜັນໄປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ"

"ຂໍ້ນັ້ນບໍ່ຄວນເລີຍ ພຣະໂຄດົມຜູ້ຈະເລີນ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ຜູ້ໃດຕິດທຸກ ເຂົ້າເຖິງທຸກແລ້ວ ກຳກືນທຸກແລ້ວ ຍັງພິຈາລະນາເຫັນທຸກວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ" ຜູ້ນັ້ນກຳນົດຮູ້ທຸກໄດ້ເອງ ຫຼື ຈະເຮັດທຸກໃຫ້ສິ້ນໄປແລ້ວຈຶ່ງຢູ່ ມີແດ່ບໍ?"

"ຈະມີໄດ້ແນວໃດ ຂໍ້ນີ້ມີບໍ່ໄດ້ເລີຍ ພຣະໂຄດົມຜູ້ຈະເລີນ"

"ອັກຄິເວດສະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ເມື່ອເປັນແນວນີ້ ທ່ານຕິດທຸກ ເຂົ້າເຖິງທຸກແລ້ວ ກຳກືນທຸກແລ້ວ ຍັງພິຈາລະນາເຫັນທຸກວ່າ "ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາບໍ່ແມ່ນບໍ?"

"ຈະບໍ່ມີໄດ້ແນວໃດ ຂໍ້ນີ້ຕ້ອງເປັນດັ່ງນັ້ນ ພຣະໂຄດົມຜູ້ຈະເລີນ"

## ສັດຈະກະນິຄົນຖະບຸດຍອມຈຳນົນ

[໓໕໙] "ອັກຄິເວດສະນະ ບຸຣຸດຜູ້ຕ້ອງການແກ່ນໄມ້ ທ່ຽວເສາະສະແຫວງຫາແກ່ນໄມ້ ຖື ເອົາຕາກທີ່ຄົມເຂົ້າໄປສູ່ປ່າ ເຂົາເຫັນຕົ້ນກ້ວຍໃຫຍ່ຕົ້ນໜຶ່ງໃນປ່າ ມີຕົ້ນຊື່ ກຳລັງໃຫຍ່ ຍັງບໍ່ຖອກ ປີ ເຂົາຈຶ່ງຕັດຕົ້ນກ້ວຍນັ້ນຢູ່ໂຄນຕົ້ນ ແລ້ວຕັດຍອດ ລິດໃບອອກ ເຂົາບໍ່ພໍ້ແມ່ນແຕ່ມອກ ແລ້ວ ຈະພົບແກ່ນມາໄດ້ຈາກໃສ ແມ່ນສັນໃດ ທ່ານກໍຄືກັນສັນນັ້ນ ຖືກເຮົາ ຊັກໄຊ້ ໄລ່ລຽງ ສອບ ສວນໃນຄຳເວົ້າຂອງຕົນເອງ ກໍເປົ່າ ວ່າງ ປຣາໄຊໄປເອງ ທ່ານໄດ້ປະກາດຕົນໃນບ່ອນຊຸມຊົນ ໃນນະຄອນເວສາລີວ່າ "ສະມະນະ ຫຼື ພາມຜູ້ເປັນເຈົ້າໝູ່ ເຈົ້າຄະນະ ເປັນຄະນາຈານ ທີ່ປະຕິ ຍານຕົນວ່າ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ເມື່ອໂຕ້ຕອບວາທະກັບເຮົາແລ້ວຈະບໍ່ ຕົກຊະເງີ້ ບໍ່ສະທົກສະທ້ານ ບໍ່ຫວັ່ນໄຫວ ບໍ່ມີເຫື່ອໄຫຼຈາກຂີ້ແຮ້ ເຮົາບໍ່ເຫັນເລີຍແມ່ນແຕ່ຄົນດຽວ ຫາກເຮົາໂຕ້ຕອບວາທະກັບຕົ້ນເສົາທີ່ບໍ່ມີຈິດໃຈ ແມ່ນເສົາຕົ້ນນັ້ນທີ່ໂຕ້ຕອບວາທະກັບເຮົາ ກໍ ຕ້ອງຕົກຊະເງີ້ ສະທົກສະທ້ານ ຫວັ່ນໄຫວ ບໍ່ຈຳເປັນຕ້ອງເວົ້າຮອດມະນຸດເລີຍ"

ອັກຄິເວດສະນະ ເມັດເຫື່ອຂອງທ່ານບາງເມັດ ຍ້ອຍຈາກໜ້າຜາກຕົກຖືກຜ້າຫົ່ມແລ້ວ ຕົກລົງສູ່ພື້ນ ສ່ວນເມັດເຫື່ອໃນກາຍຂອງເຮົາໃນບັດນີ້ບໍ່ມີເລີຍ"

ເມື່ອແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊົງເປີດພຣະວໍຣະກາຍອັນມີພຣະສະວີວັນເໜືອນ ຄຳໃນບ່ອນຊຸມຊົນນັ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສັດຈະກະນິຄົນຖະບຸດ ກໍໄດ້ນັ່ງມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊົບເຊົາ ມົດປະຕິພານ

[໓໖໐] ຄັ້ງນັ້ນ ເຈົ້າລິດສະຫວີພຣະນາມວ່າ ທຸມມຸຂະ ເຫັນວ່າ ສັດຈະກະນິຄົນຖະບຸດ ນັ່ງມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊົບເຊົາ ມົດປະຕິພານ ຈຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ຂໍໃຫ້ຂ້າພະເຈົ້າສະແດງອຸປະມາຖວາຍ ດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທຸມມຸຂະ ຂໍເຊີນທ່ານສະແດງອຸປະມາເທີ້ນ"

ເຈົ້າລິດສະຫວີນັ້ນໄດ້ຂາບທູນວ່າ "ໃນບ່ອນໃກ້ເຮືອນ ຫຼື ນິຄົມ ມີສະໂບກຂະຣະນີຢູ່ສະ ໜຶ່ງ ໃນສະນັ້ນມີປູຢູ່ຕົວໜຶ່ງ ພວກເດັກນ້ອຍ ຍິງ ຊາຍ ເປັນຈຳນວນຫຼາຍອອກຈາກເຮືອນຫຼືນິ ຄົມນັ້ນ ໄປເຖິງສະໂບກຂະຣະນີນັ້ນແລ້ວກໍລົງໄປຈັບປູຂຶ້ນຈາກນ້ຳ ວາງໄວ້ເທິງບົກ ປູນັ້ນສ່າຍ ກ້າມໄປທາງໃດ ເດັກເຫຼົ່ານັ້ນກໍຖ້າຕ່ອຍ ຕີ ທຸບກ້າມປູນັ້ນ ດ້ວຍໄມ້ແດ່ ດ້ວຍກະເບື້ອງແດ່ ເມື່ອ ປູນັ້ນກ້າມຫັກຈົນໝົດແລ້ວ ກໍບໍ່ສາມາດຍາງລົງສູ່ສະໂບກຂະຣະນີນັ້ນຄືແຕ່ກ່ອນໄດ້ ແມ່ນສັນໃດ ທິດຖິທີ່ເປັນສ້ຽນໜາມ ທີ່ເຂົ້າໃຈຜິດ ແລະ ທີ່ກວັດແກວ່ງບາງຢ່າງຂອງສັດຈະກະນິຄົນຖະບຸດ

ຖືກພຣະອົງ ທັກ ໄຕ່ນ ລົບ ລ້າງມົດແລ້ວ ບັດນີ້ ສັດຈະກະ ນິຄັນຖະບຸດກໍຈະບໍ່ມາໃກ້ພຣະອົງ ເພື່ອໂຕ້ວາທະອີກຄືກັນສັນນັ້ນ"

ເມື່ອເຈົ້າລິດສະຫວີນາມວ່າທຸມມຸຂະກ່າວແບບນີ້ແລ້ວ ສັດຈະກະນິຄັນຖະບຸດ ຈຶ່ງເວົ້າວ່າ "ເຈົ້າທຸມມຸຂະ ທ່ານຢຸດເຫີ້ນ ຢຸດເຫີ້ນ ທ່ານເວົ້າຫຼາຍໂພດແລ້ວ ຂ້າພະເຈົ້າບໍ່ໄດ້ເວົ້າກັບທ່ານ ຂ້າພະເຈົ້າເວົ້າກັບທ່ານພຣະໂຄດົມຕ່າງຫາກ"

## ພຣະສາວົກຜູ້ປະຕິບັດຕາມຄຳສອນ

[໓໖໑] (ສັດຈະກະນິຄັນຖະບຸດ) ເມື່ອກ່າວແບບນີ້ແລ້ວກໍຂາບທູນວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຄຳເວົ້ານີ້ເປັນຂອງຂ້າພະເຈົ້າ ແລະ ຂອງພວກສະມະນະພາມເຫຼົ່າອື່ນ ຢຸດໄວ້ກ່ອນ ຄຳເວົ້ານັ້ນອາດເປັນແຕ່ຄຳບໍ່ມີສາຣະ ເວົ້າປ່ວງໄປດ້ວຍເຫດພຽງທໍ່ໃດ ສາວົກຂອງທ່ານພຣະໂຄດົມຈຶ່ງຊື່ວ່າ ເປັນຜູ້ເຮັດຕາມຄຳສອນ ເຮັດຖືກຕາມໂອວາດ ມົດຄວາມສົງໄສ ບໍ່ມີຄຳຖາມໃດອີກ ມີຄວາມແກ່ກ້າ ບໍ່ຕ້ອງເຊື່ອໃຜອີກໃນຄຳສອນຂອງສາດສະດາ (ຂອງຕົນ)"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັກຄິເວດສະນະ ສາວົກຂອງເຮົາໃນທຳວິໄນນີ້ ເຫັນປັນຈະຂັນນັ້ນທັງໝົດ ຄື ຮູບແບບໃດແບບໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນ ຫຼື ພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຕາມຄວາມເປັນຈິງດ້ວຍປັນຍາອັນຊອບແບບນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເວທະນາແບບໃດແບບໜຶ່ງ ຯລຯ ສັນຍາແບບໃດແບບໜຶ່ງ ຯລຯ ສັງຂານແບບໃດແບບໜຶ່ງ ຯລຯ ວິນຍານແບບໃດແບບໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຕາມຄວາມເປັນຈິງດ້ວຍປັນຍາອັນຊອບແບບນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ດ້ວຍເຫດພຽງທໍ່ນີ້ແລ ສາວົກຂອງເຮົາຈຶ່ງຊື່ວ່າ ເປັນຜູ້ເຮັດຕາມຄຳສັ່ງສອນ ເຮັດຖືກຕາມໂອວາດ ມົດຄວາມສົງໄສ ບໍ່ມີຄຳຖາມໃດອີກ ມີຄວາມແກ່ກ້າ ບໍ່ຕ້ອງເຊື່ອໃຜອີກໃນຄຳສອນຂອງສາດສະດາ (ຂອງຕົນ)"

"ຂ້າແດ່ພຣະໂຄດົມຜູ້ຈະເລີນ ດ້ວຍເຫດພຽງທໍ່ໃດ ພິກຂຸຊື່ວ່າເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຊອບ"

"ອັກຄິເວດສະນະ ພິກຂຸໃນທຳວິໄນນີ້ ເຫັນປັນຈະຂັນນັ້ນທັງໝົດ ຄື ຮູບແບບໃດແບບໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຕາມຄວາມເປັນຈິງດ້ວຍປັນຍາອັນຊອບແບບນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເຫັນເວທະນາແບບໃດແບບໜຶ່ງ ຯລຯ ເຫັນສັນຍາ

ແນວໃດແນວໜຶ່ງ ຯລຯ ເຫັນສັງຂານແນວໃດແນວໜຶ່ງ ຯລຯ ເຫັນວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຕາມຄວາມເປັນຈິງດ້ວຍປັນຍາອັນຊອບແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ຈຶ່ງລຸດພົ້ນແລ້ວຍ້ອນບໍ່ຖືໝັ້ນ ດ້ວຍເຫດພຽງເທົ່ານີ້ແລ ພິກຂຸຊື່ວ່າເປັນ ອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຊອບ ພິກຂຸຜູ້ມີຈິດລຸດພົ້ນແລ້ວຢ່າງນີ້ແລ ປະກອບດ້ວຍຄຸນອັນປະເສີດ ໓ ປະການ ຄື

໑. ຄວາມເຫັນອັນປະເສີດ
໒. ຂໍ້ປະຕິບັດອັນປະເສີດ
໓. ຄວາມລຸດພົ້ນອັນປະເສີດ

ເມື່ອມີຈິດລຸດພົ້ນແລ້ວຢ່າງນີ້ຍ່ອມສັກກາຣະ ເຄົາລົບ ນັບຖື ບູຊາຕະຖາຄົດວ່າ "ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຕັດສະຣູ້ແລ້ວ ຊົງສະແດງທຳເພື່ອໃຫ້ຕັດສະຣູ້ ພຣະຜູ້ມີພຣະພາກພຣະອົງນັ້ນ ຊົງເຝິກພຣະອົງເອງແລ້ວ ຊົງສະແດງທຳເພື່ອເຝິກຕົນ ພຣະຜູ້ມີພຣະພາກພຣະອົງນັ້ນຊົງສະງົບແລ້ວ ຊົງສະແດງທຳເພື່ອຄວາມສະງົບ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຂ້າມພົ້ນແລ້ວ ຊົງສະແດງທຳເພື່ອໃຫ້ຂ້າມພົ້ນ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ປະຣິນິບພານແລ້ວ ຊົງສະແດງທຳເພື່ອປະຣິນິບພານ"

## ສັດຈະກະນິຄົນຖະບຸດຖວາຍພັດຕາຫານ

[໓໖໒] ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ແລ້ວ ສັດຈະກະນິຄົນຖະບຸດໄດ້ຂາບທູນວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂ້າພະເຈົ້າເປັນຄົນຄອຍກຳຈັດຄຸນຜູ້ອື່ນ ເປັນຄົນຄະນອງວາຈາ ໄດ້ເຂົ້າໃຈພຣະດຳຣັດຂອງທ່ານພຣະໂຄດົມວ່າ "ຕົນສາມາດຣຸກຣານໄດ້ດ້ວຍຄຳເວົ້າຂອງຕົນ" ບຸຣຸດມາປະທະຊ້າງຕົກມັນເຂົ້າກໍດີ ພົບກອງໄຟທີ່ກຳລັງໄໝໄໝ້ກໍດີ ພົ້ງພິດທີ່ມີພິດຮ້າຍກໍດີ ຍັງພໍເອົາຕົວລອດໄດ້ແດ່ ແຕ່ພໍມາພົບທ່ານພຣະໂຄດົມເຂົ້າແລ້ວ ບໍ່ມີໃຜເອົາຕົວລອດໄດ້ເລີຍ ຂ້າພະເຈົ້າເປັນຄົນຄອຍກຳຈັດຄຸນຜູ້ອື່ນ ເປັນຄົນຄະນອງວາຈາ ໄດ້ເຂົ້າໃຈ ພຣະດຳຣັດຂອງທ່ານພຣະໂຄດົມວ່າ "ຕົນສາມາດຣຸກຣານໄດ້ດ້ວຍຄຳເວົ້າຂອງຕົນ" ຂໍທ່ານ ພຣະໂຄດົມພ້ອມດ້ວຍພິກຂຸສົງ ຈົ່ງຮັບນິມົນເພື່ອສັນໃນມື້ອື່ນນີ້ດ້ວຍເທີ້ນ"

## ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

[໓໖໓] ລຳດັບນັ້ນ ສັດຈະກະນິຄົນຖະບຸດ ຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງບອກພວກເຈົ້າລິດສະຫວີເຫຼົ່ານັ້ນວ່າ "ເຈົ້າລິດສະຫວີທັງຫຼາຍໂຜດຟັງຂ້າພະເຈົ້າ ຂ້າ

ພະເຈົ້ານິມົນທ່ານພຣະໂຄດົມ ພ້ອມດ້ວຍພິກຂຸສົງໄວ້ແລ້ວ ເພື່ອສັນໃນວັນຮຸ່ງຂຶ້ນ ພວກທ່ານຈະນຳອາຫານໃດມາເພື່ອຂ້າພະເຈົ້າ ຈົ່ງເລືອກອາຫານທີ່ຄວນແກ່ທ່ານພຣະໂຄດົມເທີ້ນ"

ເມື່ອລ່ວງຣາຕີແລ້ວ ເຈົ້າລິດສະຫວີເຫຼົ່ານັ້ນໄດ້ນຳພັດຕາຫານປະມານ ໕໐໐ ສຳຣັບໄປໃຫ້ແກ່ສັດຈະກະນິຄົນຖະບຸດ ເຂົາຈຶ່ງໃຫ້ຈັດຂອງຫຍ້ຳຂອງສັນອັນປະນີດ ໃນອາຣາມຂອງຕົນສຳເລັດແລ້ວ ຈຶ່ງໃຫ້ທູນບອກເວລາແດ່ພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນເວລານີ້ເປັນເວລາອັນຄວນ ພັດຕາຫານຈັດກຽມສຳເລັດແລ້ວ"

ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພິກຂຸສົງຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດເຂົ້າໄປສູ່ອາຣາມຂອງສັດຈະກະນິຄົນຖະບຸດ ແລ້ວປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຈາກນັ້ນ ສັດຈະກະນິຄົນຖະບຸດໄດ້ນຳຂອງຂົບສັນອັນປະນີດ ປະເຄນພິກຂຸສົງ ມີພຣະພຸດທະເຈົ້າເປັນປະມຸກໃຫ້ອີ່ມໜຳດ້ວຍມືຕົນເອງ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດ ຊົງວາງພຣະຫັດຈາກບາດແລ້ວ ສັດຈະກະນິຄົນຖະບຸດ ຈຶ່ງເລືອກນັ່ງໃນທີ່ສົມຄວນທີ່ໃດທີ່ໜຶ່ງ ເຊິ່ງຕ່ຳກວ່າແລ້ວຂາບທູນວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂໍບຸນແລະຜົນບຸນໃນທານຄັ້ງນີ້ ຈົ່ງມີເພື່ອຄວາມສຸກແກ່ທາຍົກທັງຫຼາຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັກຄິເວດສະນະ ບຸນແລະຜົນບຸນໃນທານນີ້ອາໄສທັກຂິໄນຍະບຸກຄົນທີ່ຍັງບໍ່ສິ້ນຣາຄະ ໂທສະ ໂມຫະເຊັ່ນກັບທ່ານ ຈັກມີແກ່ທາຍົກທັງຫຼາຍ

ບຸນແລະຜົນບຸນໃນທານນີ້ອາໄສທັກຂິໄນຍະບຸກຄົນທີ່ສິ້ນຣາຄະ ໂທສະ ໂມຫະເຊັ່ນກັບເຮົາຈັກມີແກ່ທ່ານ"

**ຈູລະສັດຈະກະສູດທີ ໕ ຈົບ**

# ໖. ມະຫາສັດຈະກະສູດ

## ວ່າດ້ວຍສັດຈະກະນິຄົນຖະບຸດ ສູດໃຫຍ່

[໓໖໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ກູຕາຄາຣະສາລາປ່າມະຫາວັນ ເຂດນະຄອນເວສາລີ ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ມີພຣະພຸດທະປະສົງຈະສະເດັດເຂົ້າໄປບິນທະບາດໃນກຣຸງເວສາລີ ໃນຂະນະນັ້ນ ສັດຈະກະນິຄົນຖະບຸດຍ່າງທ່ຽວຫຼິ້ນຢູ່ ໄດ້ເຂົ້າໄປທີ່ກູຕາຄາຣະສາລາປ່າມະຫາວັນ

ທ່ານພຣະອານົນໄດ້ເຫັນສັດຈະກະນິຄົນຖະບຸດຍ່າງມາແຕ່ໄກ ຈຶ່ງຂາບທູນພຣະຜູ້ມີພຣະພາກວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ສັດຈະກະນິຄົນຖະບຸດນີ້ ເປັນນັກໂຕ້ວາທະ ເວົ້າຍົກຕົນວ່າເປັນບັນດິດ ຊົນຈຳນວນຫຼາຍຍອມຍົກວ່າເປັນຜູ້ມີລັດທິດີ ເຂົາປາຖະໜາຈະຕິຕຽນພຣະພຸດທະເຈົ້າ ປາຖະໜາຈະຕິຕຽນພຣະທຳ ແລະ ປາຖະໜາຈະຕິຕຽນພຣະສົງ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າປະທັບນັ່ງຈັກນ້ອຍໜຶ່ງກ່ອນເທີ້ນ"

ເມື່ອແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງປະທັບຢູ່ເທິງພຸດທະອາດທີ່ປູລາດຖວາຍໄວ້ໃຫ້ແລ້ວ ຂະນະນັ້ນ ສັດຈະກະນິຄົນຖະບຸດ ເຂົ້າໄປຮອດທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ແລ້ວທູນສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວຈຶ່ງນັ່ງໃນທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

## ບັນຫາຂອງສັດຈະກະ ນິຄົນຖະບຸດ

[໓໖໕] "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ມີສະມະນະພາມພວກໜຶ່ງ ໝັ່ນປະກອບກາຍພາວະນາ[๑]ຢູ່ ແຕ່ບໍ່ໄດ້ໝັ່ນປະກອບຈິດຕະພາວະນາ[๒] ສະມະນະພາມພວກນັ້ນຍ່ອມປະສົບທຸກຂະເວທະນາທາງກາຍ ເລື້ອງເຄີຍມີມາແລ້ວ ເມື່ອບຸກຄົນຖືກທຸກຂະເວທະນາທາງກາຍກະທົບເຂົ້າແລ້ວ ຄວາມຂັດຍອກຂາຈັກມີແດ່ ຫະໄທຈັກແຕກແດ່ ເລືອດອຸ່ນ ໆ ຈັກຊັດອອກຈາກປາກແດ່ ຈັກເຖິງຄວາມມີຈິດຟຸ້ງຊ່ານຈົນເປັນບ້າກໍມີ ຈິດອັນໝຸນໄປຕາມກາຍຂອງຜູ້ນັ້ນ ກໍເປັນໄປຕາມອຳນາດກາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບໍ່ໄດ້ອົບຮົມຈິດ ມີສະມະນະພາມພວກໜຶ່ງ ໝັ່ນປະກອບຈິດຕະພາວະນາຢູ່ ແຕ່ບໍ່ໄດ້ໝັ່ນປະກອບກາຍພາວະນາ ສະມະນະພາມພວກນັ້ນຍ່ອມປະສົບທຸກຂະເວທະນາທາງຈິດ ເລື້ອງເຄີຍມີມາແລ້ວ ເມື່ອບຸກຄົນຖືກທຸກຂະເວທະນາທາງຈິດກະທົບເຂົ້າແລ້ວ ຄວາມຂັດຍອກຂາຈັກມີແດ່ ຫະໄທຈັກແຕກແດ່ ເລືອດອຸ່ນຈັກຊັດອອກຈາກປາກແດ່ ຈັກເຖິງຄວາມມີຈິດຟຸ້ງຊ່ານຈົນເປັນບ້າກໍມີ ກາຍທີ່ໝຸນໄປຕາມຈິດຂອງຜູ້ນັ້ນ ກໍເປັນໄປຕາມອຳນາດຈິດ ຂໍ້ນັ້ນ ຍ້ອນເຫດໃດ? ຍ້ອນບໍ່ໄດ້ອົບຮົມກາຍ

ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂ້າພະເຈົ້າມີຄວາມຄິດວ່າ "ໝູ່ສາວົກຂອງທ່ານພຣະໂຄດົມ ໝັ່ນປະກອບຈິດຕະພາວະນາຢູ່ໂດຍແທ້ ແຕ່ບໍ່ແມ່ນໝັ່ນປະກອບກາຍພາວະນາຢູ່"

[໓໖໖] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັກຄິເວດສະນະ ທ່ານໄດ້ຟັງກາຍພາວະນາມາແນວໃດ?"

ສັດຈະກະນິຄົນຖະບຸດທູນຕອບວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ທ່ານນັນທະ ວັດສະໂຄດ ທ່ານກິສະສັງກັດຈະໂຄດ ທ່ານມັກຂະລິໂຄສານ ກໍທ່ານເຫຼົ່ານີ້ເປັນອະເຈລະກະ (ປະພຶດເປືອຍກາຍ) ເປັນຄົນບໍ່ມີມາຣະຍາດ ເລຍມື ເຂົາເຊີນໃຫ້ໄປຮັບອາຫານກໍບໍ່ໄປ ເຂົາເຊີນໃຫ້ຢຸດ

ຮັບອາຫານກໍບໍ່ຢຸດ ບໍ່ຮັບອາຫານທີ່ເຂົາແບ່ງໄວ້ ບໍ່ຮັບອາຫານທີ່ເຂົາເຮັດເຈາະຈົງ ບໍ່ຍິນດີອາຫານທີ່ເຂົາເຊີນ ບໍ່ຮັບອາຫານຈາກປາກໝໍ້ ບໍ່ຮັບອາຫານຈາກປາກພາຊະນະ ບໍ່ຮັບອາຫານກວມທໍຣະນີປະຕູ ບໍ່ຮັບອາຫານກວມໄມ້ຄ້ອນ ບໍ່ຮັບອາຫານກວມສາກ ບໍ່ຮັບອາຫານຂອງຄົນ ໒ ຄົນທີ່ກຳລັງບໍຣິໂພກ ບໍ່ຮັບອາຫານຂອງຍິງຖືພາ ບໍ່ຮັບອາຫານຂອງຍິງຜູ້ກຳລັງໃຫ້ບຸດດື່ມນົມ ບໍ່ຮັບອາຫານຂອງຍິງທີ່ກ່ຽວພາຊາຍ ບໍ່ຮັບອາຫານທີ່ນັດແນະກັນເຮັດໄວ້ ບໍ່ຮັບອາຫານໃນບ່ອນລ້ຽງໝາ ບໍ່ຮັບອາຫານໃນບ່ອນມີແມງວັນໄຕ່ຕອມເປັນກຸ່ມ ໆ ບໍ່ກິນປາ ບໍ່ກິນຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມຢາດອງ ເຂົາຮັບອາຫານໃນເຮືອນຫຼັງດຽວ ເປັນຢູ່ດ້ວຍເຂົ້າຄຳດຽວ ຮັບອາຫານໃນເຮືອນ ໒ ຫຼັງ ເປັນຢູ່ດ້ວຍເຂົ້າ ໒ ຄຳ ຯລຯ ຮັບອາຫານໃນເຮືອນ ໗ ຫຼັງ ເປັນຢູ່ດ້ວຍເຂົ້າ ໗ ຄຳ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໑ ໃບ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໒ ໃບ ຯລຯ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໗ ໃບ ກິນອາຫານທີ່ເກັບໄວ້ຄ້າງຄືນ ໑ ວັນ ກິນອາຫານທີ່ເກັບໄວ້ຄ້າງຄືນ ໒ ວັນ ຯລຯ ກິນອາຫານທີ່ເກັບໄວ້ຄ້າງຄືນ ໗ ວັນ ຖືການບໍຣິໂພກພັດຕາຫານຕາມວາຣະ ໑໕ ວັນຕໍ່ມື້ໆແບບນີ້ຢູ່ ດ້ວຍປະການແບບນີ້ແດ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັກຄິເວດສະນະ ບຸກຄົນເຫຼົ່ານັ້ນລ້ຽງຕົນດ້ວຍອາຫານພຽງທີ່ນັ້ນຢ່າງດຽວແມ່ນບໍ?"

ສັດຈະກະນິຄົນຖະບຸດທູນຕອບວ່າ "ຂໍ້ນີ້ບໍ່ເປັນດັ່ງນັ້ນ ພຣະໂຄດົມຜູ້ຈະເລີນ ບາງເທື່ອທ່ານເຫຼົ່ານັ້ນ ຫຍໍ້າຂອງຄວນຫຍໍ້າຢ່າງດີ ບໍຣິໂພກໂພຊະນະຢ່າງດີ ຊີມຂອງຊີມຢ່າງດີ ດື່ມນໍ້າຢ່າງດີ ເຮັດໃຫ້ຮ່າງກາຍນີ້ມີກຳລັງ ຕຸ້ຍພີຂຶ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັກຄິເວດສະນະ ບຸກຄົນເຫຼົ່ານັ້ນ ລະທຸກກອນກິຣິຍາທີ່ປະພຶດມາກ່ອນແລ້ວ ບຳລຸງກາຍນີ້ໃນພາຍຫຼັງ ເມື່ອເປັນແບບນັ້ນ ກາຍນີ້ກໍມີຄວາມຈະເລີນແລະຄວາມເສື່ອມໄປ"

ພຣະຜູ້ມີພຣະພາກເຈົ້າຕັດຖາມອີກວ່າ "ອັກຄິເວດສະນະ ທ່ານໄດ້ຟັງຈິດຕະພາວະນາມາແນວໃດ?"

ສັດຈະກະນິຄົນຖະບຸດ ເມື່ອຖືກພຣະຜູ້ມີພຣະພາກເຈົ້າຕັດຖາມໃນຈິດຕະພາວະນາ ກໍບໍ່ສາມາດທູນຕອບຖວາຍໄດ້

## ກາຍພາວະນາແລະຈິດຕະພາວະນາ

[໓໗໗] ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບສັດຈະກະນິຄົນຖະບຸດວ່າ "ອັກຄິເວດສະນະ ກາຍພາວະນາທີ່ປະພຶດມາກ່ອນ ເຊິ່ງທ່ານອົບຮົມແລ້ວນັ້ນ ບໍ່ແມ່ນກາຍພາວະນາທີ່

ຖືກຕ້ອງໃນອະຣິຍະວິໄນ ທ່ານຍັງບໍ່ຮູ້ຈັກແມ່ນກາຍພາວະນາ ແລ້ວຈະຮູ້ຈັກຈິດຕະພາວະນາໄດ້ແນວໃດ ບຸກຄົນຜູ້ບໍ່ໄດ້ອົບຮົມກາຍ ບໍ່ໄດ້ອົບຮົມຈິດ ແລະ ບຸກຄົນຜູ້ໄດ້ອົບຮົມກາຍ ຜູ້ໄດ້ອົບຮົມຈິດ ມີໄດ້ດ້ວຍວິທີໃດ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວສະແດງຮອດວິທີນັ້ນ"

ເມື່ອສັດຈະກະນິຄົນຖະບຸດ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດສະແດງວ່າ

[໓໖໙] "ບຸກຄົນຜູ້ບໍ່ໄດ້ອົບຮົມກາຍ ບໍ່ໄດ້ອົບຮົມຈິດ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ຜູ້ຍັງບໍ່ໄດ້ສະດັບ ມີສຸກເວທະນາເກີດຂຶ້ນ ຖືກສຸກເວທະນາກະທົບແລ້ວ ມີຄວາມຍິນດີຍິ່ງໃນສຸກເວທະນາ ແລະ ເຖິງຄວາມເປັນຜູ້ຍິນດີຍິ່ງໃນສຸກເວທະນານັ້ນ ຕໍ່ມາເມື່ອສຸກເວທະນານັ້ນຂອງເຂົາຍ່ອມດັບໄປ ຍ້ອນສຸກເວທະນານັ້ນດັບໄປ ທຸກຂະເວທະນາຈຶ່ງເກີດຂຶ້ນ ເມື່ອເຂົາຖືກທຸກຂະເວທະນາກະທົບເຂົ້າແລ້ວ ກໍເສົ້າໂສກ ເສຍໃຈ ຮ່ຳໄຮ ຕີອົກ ໄຫ້ຈົ່ມ ເຖິງຄວາມຫຼົງໃຫຼ ໃນສຸກເວທະນານັ້ນ ແມ່ນທີ່ເກີດຂຶ້ນແກ່ເຂົາແລ້ວ ກໍຄອບງຳຈິດຢູ່ ຍ້ອນເຫດທີ່ບໍ່ໄດ້ອົບຮົມກາຍ ທຸກຂະເວທະນາແມ່ນທີ່ເກີດຂຶ້ນແລ້ວ ກໍຄອບງຳຈິດຢູ່ ຍ້ອນເຫດທີ່ບໍ່ໄດ້ອົບຮົມຈິດ ສຸກເວທະນາ ແລະ ທຸກຂະເວທະນາທັງ ໔ ຢ່າງທີ່ເກີດຂຶ້ນແກ່ປຸຖຸຊົນຄົນໃດຄົນໜຶ່ງຢ່າງນີ້ ກໍຄອບງຳຈິດຢູ່ ຍ້ອນເຫດທີ່ບໍ່ໄດ້ອົບຮົມກາຍ ຍ້ອນເຫດທີ່ບໍ່ໄດ້ອົບຮົມຈິດ

ອັກຄິເວດສະນະ ບຸກຄົນຜູ້ບໍ່ໄດ້ອົບຮົມກາຍ ບໍ່ໄດ້ອົບຮົມຈິດ ເປັນແນວນີ້

[໓໖໙] ບຸກຄົນຜູ້ໄດ້ອົບຮົມກາຍ ໄດ້ອົບຮົມຈິດ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຜູ້ໄດ້ສະດັບແລ້ວ ມີສຸກເວທະນາເກີດຂຶ້ນ ຖືກສຸກເວທະນາ ກະທົບເຂົ້າແລ້ວ ບໍ່ມີຄວາມຍິນດີຍິ່ງໃນສຸກເວທະນາ ແລະ ບໍ່ເຖິງຄວາມເປັນຜູ້ຍິນດີຍິ່ງໃນສຸກເວທະນາ ສຸກເວທະນານັ້ນຂອງເຂົາຍ່ອມດັບໄປ ຍ້ອນສຸກເວທະນາດັບໄປ ທຸກຂະເວທະນາຈຶ່ງເກີດຂຶ້ນ ເຂົາຖືກທຸກຂະເວທະນາກະທົບເຂົ້າແລ້ວ ກໍບໍ່ເສົ້າໂສກ ບໍ່ເສຍໃຈ ບໍ່ຮ່ຳໄຮ ບໍ່ຕີອົກໄຫ້ຈົ່ມ ບໍ່ເຖິງຄວາມຫຼົງໃຫຼ ສຸກເວທະນານັ້ນ ແມ່ນທີ່ເກີດຂຶ້ນແກ່ອະຣິຍະສາວົກແລ້ວ ກໍບໍ່ຄອບງຳຈິດຕັ້ງຢູ່ໄດ້ ຍ້ອນເຫດທີ່ໄດ້ອົບຮົມກາຍ ທຸກຂະເວທະນາແມ່ນທີ່ເກີດຂຶ້ນແລ້ວກໍຄອບງຳຈິດຢູ່ບໍ່ໄດ້ ຍ້ອນເຫດທີ່ໄດ້ອົບຮົມຈິດ ສຸກເວທະນາແລະທຸກຂະເວທະນາທັງ ໔ ຢ່າງທີ່ເກີດຂຶ້ນແກ່ອະຣິຍະສາວົກຜູ້ໃດຜູ້ໜຶ່ງຢ່າງນີ້ ກໍບໍ່ຄອບງຳຈິດຕັ້ງຢູ່ໄດ້ ຍ້ອນເຫດທີ່ໄດ້ອົບຮົມກາຍ ຍ້ອນເຫດທີ່ໄດ້ອົບຮົມຈິດ

ອັກຄິເວດສະນະ ບຸກຄົນຜູ້ໄດ້ອົບຮົມກາຍ ໄດ້ອົບຮົມຈິດ ເປັນແນວນີ້ແລ"

[໓໗໐] ສັດຈະກະນິຄົນຖະບຸດຂາບທູນວ່າ "ຖ້າເປັນແນວນີ້ ຂ້າພະເຈົ້າຂໍເຫຼື້ອມໃສ ທ່ານ

ພຣະສະມະນະໂຄດົມ ຍ້ອນທ່ານພຣະສະມະນະໂຄດົມໄດ້ອົບຮົມກາຍແລ້ວ ໄດ້ອົບຮົມຈິດແລ້ວ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັກຄິເວດສະນະ ທ່ານນຳວາຈານີ້ມາເວົ້າກະທົບກະທຽບ ໃສ່ເຮົາ ແຕ່ເຮົາຈະບອກແກ່ທ່ານ ເມື່ອໃດເຮົາແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກ ຈາກວັງບວດເປັນບັນພະຊິດ ເມື່ອນັ້ນ ເປັນໄປບໍ່ໄດ້ເລີຍທີ່ຈິດຂອງເຮົານັ້ນ ຈະຖືກສຸກເວທະນາທີ່ ເກີດຂຶ້ນຄອບງຳຢູ່ ຫຼື ຈະຖືກທຸກຂະເວທະນາທີ່ເກີດຂຶ້ນຄອບງຳຢູ່"

ສັດຈະກະ ນິຄັນຖະບຸດຂາບທູນວ່າ "ສຸກເວທະນາທີ່ເກີດຂຶ້ນ ເຊິ່ງພໍຈະຄອບງຳຈິດຕັ້ງຢູ່ ຫຼື ທຸກຂະເວທະນາທີ່ເກີດຂຶ້ນເຊິ່ງພໍຈະຄອບງຳຈິດຕັ້ງຢູ່ ຍ່ອມບໍ່ເກີດຂຶ້ນແກ່ພຣະສະມະນະໂຄດົມ ຜູ້ຈະເລີນໂດຍແທ້"

[໓໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັກຄິເວດສະນະ ເປັນຫຍັງເວທະນາທັງ ໒ ນັ້ນ ຈຶ່ງຈະບໍ່ມີແກ່ເຮົາ ເຮົາຈະເລົ່າໃຫ້ຟັງ ກ່ອນການຕັດສະຣູ້ ເມື່ອເຮົາເປັນໂພທິສັດ ຍັງບໍ່ໄດ້ຕັດ ສະຣູ້ ໄດ້ມີຄວາມຄິດວ່າ "ການຢູ່ຄອງເຮືອນເປັນເລື້ອງອຶດອັດ ເປັນທາງແຫ່ງທຸລີ໌ ການບວດ ເປັນທາງປອດໂປ່ງລ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດ ໃຫ້ບໍລິບູນຄົບຖ້ວນ ເໝືອນສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກວັງບວດເປັນບັນພະຊິດເທີ້ນ"

## ພຸດທະປະຫວັດຕອນພໍ່າເພັງສະມາບັດ

## ໃນສຳນັກອາລາຣະດາບົດ

ອັກຄິເວດສະນະ ໃນການຕໍ່ມາ ເຮົາຍັງໜຸ່ມແໜ້ນ ແຂງແຮງ ມີເກສາດຳແຈບ ຢູ່ໃນປະ ຖົມວັຍ ເມື່ອພຣະຣາຊະມານດາ ແລະ ພຣະຣາຊະບິດາບໍ່ຊົງປາຖະໜາຈະໃຫ້ຜະນວຊ ມີພຣະ ພັກນອງດ້ວຍນ້ຳພຣະເນດຊົງກັນແສງຢູ່ ແຕ່ເຮົາກໍຍັງແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກວັງບວດເປັນບັນພະຊິດ ເມື່ອບວດແລ້ວກໍສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ ສະແຫວງຫາທາງອັນປະເສີດຄືຄວາມສະງົບ ເຊິ່ງບໍ່ມີທາງອື່ນຍິ່ງກວ່າ ໄດ້ເຂົ້າໄປຫາອາລາຣະ ດາບົດກາລາມະໂຄດ ແລ້ວກ່າວ ວ່າ

"ທ່ານກາລາມະ ຂ້າພະເຈົ້າປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້"

ເມື່ອເຮົາກ່າວແນວນີ້ ອາລາຣະດາບົດ ກາລາມະໂຄດຈຶ່ງກ່າວກັບເຮົາວ່າ "ເຊີນທ່ານຢູ່ ກ່ອນ ທຳນີ້ກໍເປັນເຊັ່ນດຽວກັບທຳທີ່ວິນຍູຊົນຈະເພິ່ງເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ຕາມ ແບບອາຈານຂອງຕົນເຂົ້າເຖິງຢູ່ໄດ້ໃນເວລາບໍ່ດົນ" ຈາກນັ້ນບໍ່ດົນ ເຮົາກໍຮຽນຮູ້ ທຳນັ້ນໄດ້ຢ່າງ

ວ່ອງໄວ ຊົ່ວຂະນະປິດປາກຈົບການເຈລະຈາປາໄສທີ່ນັ້ນ ກໍກ່າວຍານວາທະ[໑] ແລະເຖຣວາທະ[໒] ໄດ້ ທັງເຮົາແລະຜູ້ອື່ນກໍຮູ້ແຈ້ງວ່າ "ເຮົາຮູ້ ເຮົາເຫັນ" ເຮົາຈຶ່ງຄິດວ່າ "ອາລາຣະດາບົດ ກາລາມະ ໂຄດປະກາດທຳນີ້ດ້ວຍເຫດພຽງຄວາມເຊື່ອຢ່າງດຽວວ່າ "ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ ເອງເຂົ້າເຖິງຢູ່" ກໍບໍ່ແມ່ນ ແຕ່ອາລາຣະດາບົດ ກາລາມະໂຄດ ຍັງຮູ້ຍັງເຫັນທຳນີ້ດ້ວຍປັນຍາ ຢ່າງແນ່ນອນ"

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອາລາຣະດາບົດ ກາລາມະໂຄດແລ້ວຖາມວ່າ "ທ່ານກາລາ ມະ ທ່ານປະກາດທຳນີ້ວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດ ພຽງທີ່ໃດ?"

ເມື່ອເຮົາຖາມຢ່າງນີ້ ອາລາຣະດາບົດ ກາລາມະໂຄດ ຈຶ່ງປະກາດອາກິນຈັນຍາຍະຕະ ນະສະມາບັດແກ່ເຮົາ ເຮົາຈຶ່ງຄິດວ່າ "ບໍ່ແມ່ນແຕ່ອາລາຣະດາບົດກາລາມະໂຄດທີ່ນັ້ນ ທີ່ມີສັດທາ ແມ່ນເຮົາກໍມີສັດທາ ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທີ່ນັ້ນ ທີ່ມີວິຣິຍະ ແມ່ນເຮົາກໍມີວິ ຣິຍະ ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທີ່ນັ້ນທີ່ມີສະຕິທີ່ນັ້ນ ແມ່ນເຮົາກໍມີສະຕິ ບໍ່ແມ່ນ ແຕ່ອາລາຣະດາບົດ ກາລາມະໂຄດທີ່ນັ້ນທີ່ມີສະມາທິ ແມ່ນເຮົາກໍມີສະມາທິ ບໍ່ແມ່ນແຕ່ອາລາຣະ ດາບົດ ກາລາມະໂຄດທີ່ນັ້ນທີ່ມີປັນຍາ ແມ່ນເຮົາກໍມີປັນຍາ ທາງທີ່ດີ ເຮົາຄວນພ່ຳເພັງພຽນ ເພື່ອເຮັດໃຫ້ແຈ້ງ ທຳທີ່ອາລາຣະດາບົດ ກາລາມະໂຄດປະກາດໄວ້ວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ຈາກນັ້ນບໍ່ດົນ ເຮົາກໍເຮັດໃຫ້ແຈ້ງທຳນັ້ນ ດ້ວຍປັນຍາອັນຍິ່ງ ເອງເຂົ້າເຖິງຢູ່

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອາລາຣະດາບົດ ກາລາມະໂຄດແລ້ວຖາມວ່າ "ທ່ານກາລາ ມະທ່ານປະກາດໄວ້ວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທີ່ນີ້ແມ່ນບໍ?"

ອາລາຣະດາບົດ ກາລາມະໂຄດຕອບວ່າ "ທ່ານຜູ້ມີອາຍຸ ເຮົາປະກາດວ່າ "ຂ້າພະເຈົ້າ ເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທີ່ນີ້ແລ"

(ເຮົາຈຶ່ງກ່າວວ່າ) "ທ່ານກາລາມະ ແມ່ນຂ້າພະເຈົ້າກໍເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງ ເອງເຂົ້າເຖິງຢູ່ ດ້ວຍເຫດພຽງທີ່ນີ້ໄດ້ຄືກັນ"

(ອາລາຣະດາບົດ ກາລາມະໂຄດກ່າວວ່າ) "ທ່ານຜູ້ມີອາຍຸ ເປັນລາບຂອງພວກຂ້າພະ ເຈົ້າ ພວກຂ້າພະເຈົ້າໄດ້ດີແລ້ວທີ່ໄດ້ພົບເພື່ອນພົມມະຈາຣີເຊັ່ນທ່ານ ຍ້ອນຂ້າພະເຈົ້າປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໄດ້" ທ່ານກໍເຮັດໃຫ້ແຈ້ງທຳນັ້ນ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໄດ້

ຂ້າພະເຈົ້າກໍປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເຂົ້າເຖິງຢູ່" ຂ້າພະເຈົ້າຮູ້ທຳໃດ ທ່ານກໍຮູ້ທຳນັ້ນ ທ່ານຮູ້ທຳໃດ ຂ້າພະເຈົ້າກໍຮູ້ທຳນັ້ນ ເປັນອັນວ່າຂ້າພະເຈົ້າເປັນເຊັ່ນໃດ ທ່ານກໍເປັນເຊັ່ນນັ້ນ ທ່ານເປັນເຊັ່ນໃດ ຂ້າພະເຈົ້າກໍເປັນເຊັ່ນນັ້ນ ມາເທີ້ນທ່ານ ບັດນີ້ເຮົາທັງ ໒ ຈະຢູ່ຮ່ວມກັນບໍລິຫານຄະນະນີ້"

ອັກຄິເວດສະນະ ອາລາຣະດາບົດ ກາລາມະໂຄດ ທັງທີ່ເປັນອາຈານຂອງເຮົາ ກໍຍົກຍ້ອງເຮົາຜູ້ເປັນສິດໃຫ້ສະເໝີກັບຕົນ ແລະ ບູຊາເຮົາດ້ວຍການບູຊາຢ່າງດີ ດ້ວຍປະການຢ່າງນີ້ ແຕ່ເຮົາຄິດວ່າ "ທຳນີ້ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະ ເພື່ອນິບພານ ເປັນໄປພຽງເພື່ອເຂົ້າເຖິງອາກິນຈັນຍາຍະຕະນະສະມາບັດທ່ານັ້ນ" ເຮົາບໍ່ພໍໃຈ ເບື່ອໜ່າຍທຳນັ້ນ ຈຶ່ງໄດ້ລາຈາກໄປ

## ໃນສຳນັກອຸທະກະດາບົດ

[໓໗໒] ອັກຄິເວດສະນະ ເຮົານັ້ນ ສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາທາງອັນປະເສີດ ຄື ຄວາມສະງົບ ເຊິ່ງບໍ່ມີທາງອື່ນຍິ່ງກວ່າ ໄດ້ເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວກ່າວວ່າ "ທ່ານຣາມະ ຂ້າພະເຈົ້າປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້"

ເມື່ອເຮົາກ່າວແນວນີ້ ອຸທະກະດາບົດ ຣາມະບຸດຈຶ່ງກ່າວກັບເຮົາວ່າ "ເຊີນທ່ານຢູ່ກ່ອນທຳນີ້ ກໍເປັນເຊັ່ນດຽວກັບທຳທີ່ວິນຍູຊົນຈະເພິ່ງເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ຕາມແບບອາຈານຂອງຕົນເຂົ້າເຖິງຢູ່ໄດ້ໃນເວລາບໍ່ດົນ" ຈາກນັ້ນບໍ່ດົນ ເຮົາກໍຮຽນຮູ້ທຳນັ້ນ ໄດ້ຢ່າງວ່ອງໄວຊົ່ວຂະນະປິດປາກຈົບການເຈລະຈາປາໄສທ່ານັ້ນ ກໍກ່າວຍານວາທະ ແລະເຖຣວາທະໄດ້ ທັງເຮົາແລະຜູ້ອື່ນກໍຮູ້ຊັດວ່າ "ເຮົາຮູ້ ເຮົາເຫັນ" ເຮົາຈຶ່ງຄິດວ່າ "ອຸທະກະດາບົດ ຣາມະບຸດປະກາດທຳນີ້ດ້ວຍເຫດພຽງຄວາມເຊື່ອຢ່າງດຽວວ່າ "ເຮົາເຮັດໃຫ້ແຈ້ງດ້ວຍປັນຍາ ອັນຍິ່ງເອງເຂົ້າເຖິງຢູ່" ກໍຫາບໍ່ໄດ້ ແຕ່ອຸທະກະດາບົດ ຣາມະບຸດຍັງຮູ້ຍັງເຫັນທຳນີ້ດ້ວຍປັນຍາຢ່າງແນ່ນອນ"

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວຖາມວ່າ "ທ່ານຣາມະ ທ່ານປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທ່ໃດ?"

ເມື່ອເຮົາຖາມຢ່າງນີ້ ອຸທະກະດາບົດ ຣາມະບຸດຈຶ່ງປະກາດເນວະສັນຍານາສັນຍາຍະຕະນະສະມາບັດແກ່ເຮົາ ເຮົາຈຶ່ງຄິດວ່າ "ບໍ່ແມ່ນແຕ່ອຸທະກະດາບົດ ຣາມະບຸດທ່ານັ້ນທີ່ມີສັດທາ ແມ່ນເຮົາກໍມີສັດທາ ບໍ່ແມ່ນແຕ່ອຸທະກະດາບົດ ຣາມະບຸດທ່ານັ້ນທີ່ມີວິຣິຍະ ແມ່ນເຮົາກໍມີວິຣິຍະ ບໍ່ແມ່ນແຕ່ອຸທະກະດາບົດ ຣາມະບຸດທ່ານັ້ນທີ່ມີສະຕິ ແມ່ນເຮົາກໍມີສະຕິ ບໍ່ແມ່ນແຕ່ອຸທະກະດາບົດ ຣາມະບຸດທ່ານັ້ນທີ່ມີສະມາທິ ແມ່ນເຮົາກໍມີສະມາທິ ບໍ່ແມ່ນແຕ່ອຸທະກະດາບົດ ຣາມະບຸດທ່

ນັ້ນທີ່ມີປັນຍາ ແມ່ນເຮົາກໍມີປັນຍາ ທາງທີ່ດີ ເຮົາຄວນເລີ່ມພໍ່າເພັງພຽນເພື່ອເຮັດໃຫ້ແຈ້ງທໍາທີ່ອຸທະກະດາບົດ ຣາມະບຸດປະກາດວ່າ "ຂ້າພະເຈົ້າ ເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ຈາກນັ້ນບໍ່ດົນ ເຮົາກໍໄດ້ເຮັດໃຫ້ແຈ້ງທໍານັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວຖາມວ່າ "ທ່ານຣາມະ ທ່ານປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທໍານີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທໍ່ນີ້ແມ່ນບໍ?"

ອຸທະກະດາບົດ ຣາມະບຸດຕອບວ່າ "ທ່ານຜູ້ມີອາຍຸ ຂ້າພະເຈົ້າປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທໍານີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທໍ່ນີ້ແລ"

(ເຮົາຈຶ່ງກ່າວວ່າ) "ແມ່ນຂ້າພະເຈົ້າ ກໍເຮັດໃຫ້ແຈ້ງທໍານີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ດ້ວຍເຫດພຽງທໍ່ນີ້ໄດ້ຄືກັນ"

(ອຸທະກະດາບົດ ຣາມະບຸດກ່າວວ່າ) "ທ່ານຜູ້ມີອາຍຸ ເປັນລາບຂອງພວກຂ້າພະເຈົ້າພວກຂ້າພະເຈົ້າໄດ້ດີແລ້ວ ທີ່ໄດ້ພົບເພື່ອນພົມມະຈາຣີເຊັ່ນທ່ານ ຍ້ອນ (ຂ້າພະເຈົ້າ) ຣາມະປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທໍາໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໄດ້" ແມ່ນທ່ານກໍເຮັດໃຫ້ແຈ້ງທໍານັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໄດ້ ທ່ານເຮັດໃຫ້ແຈ້ງທໍາໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຣາມະກໍປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທໍານັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ຣາມະຮູ້ທໍາໃດ ທ່ານກໍຮູ້ທໍານັ້ນ ທ່ານຮູ້ທໍາໃດ ຣາມະກໍຮູ້ທໍານັ້ນ ເປັນອັນວ່າຣາມະເປັນເຊັ່ນໃດ ທ່ານກໍເປັນເຊັ່ນນັ້ນ ທ່ານເປັນເຊັ່ນໃດ ຣາມະກໍເປັນເຊັ່ນນັ້ນ ມາເທີ້ນ ທ່ານ ບັດນີ້ທ່ານຈົ່ງບໍລິຫານຄະນະນີ້"

ອັກຄິເວດສະນະ ອຸທະກະດາບົດ ຣາມະບຸດທັງທີ່ເປັນເພື່ອນພົມມະຈາຣີຂອງເຮົາ ກໍຍັງຍົກຍ້ອງ ເຮົາໄວ້ໃນຖານະອາຈານ ແລະ ບູຊາເຮົາດ້ວຍການບູຊາຢ່າງດີດ້ວຍປະການແນວນີ້ແຕ່ເຮົາຄິດວ່າ "ທໍານີ້ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກໍາໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ແລະ ເພື່ອນິບພານ ເປັນໄປພຽງເພື່ອເຂົ້າເຖິງເນວະສັນຍານາສັນຍາຍະຕະນະສະມາບັດທໍ່ນັ້ນ" ເຮົາບໍ່ພໍໃຈ ເບື່ອໜ່າຍທໍານັ້ນ ຈຶ່ງໄດ້ລາຈາກໄປ

## ຕັດສະຣູ້ສັດຈະທໍາ

[໓໗໙] ອັກຄິເວດສະນະ ເຮົານັ້ນສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາທາງອັນປະເສີດຄືຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ເມື່ອທ່ຽວຈາຣິກໄປໃນແຄວ້ນມະຄົດໂດຍລໍາດັບ ໄດ້ໄປເຖິງເຂດອຸຣຸເວລາເສນານິຄົມ ໄດ້ເຫັນພູມປະເທດທີ່ໜ້າອອນຊອນ ມີແຖວປ່າໜ້າ

ເພີດເພີນໃຈ ມີແມ່ນ້ຳໄຫຼລິນບໍ່ຂາດສາຍ ມີທ່ານ້ຳສະອາດດີໜ້າອອນຊອນ ມີໂຄຈອນຄາມຢູ່ໂດຍຮອບ ເຮົາຈຶ່ງຄິດວ່າ "ພູມປະເທດເປັນທີ່ໜ້າອອນຊອນ ມີແຖວປ່າໜ້າເພີດເພີນໃຈ ມີແມ່ນ້ຳໄຫຼລິນບໍ່ຂາດສາຍ ມີທ່ານ້ຳສະອາດດີໜ້າອອນຊອນ ມີໂຄຈອນຄາມຢູ່ໂດຍຮອບ ເໝາະແກ່ການພ່ຳເພັງພຽນຂອງກຸນລະບຸດຜູ້ປາຖະໜາຈະພ່ຳເພັງພຽນ" ເຮົາຈຶ່ງນັ່ງລົງໃນທີ່ນັ້ນດ້ວຍຄິດວ່າ "ທີ່ນີ້ເໝາະແກ່ການພ່ຳເພັງພຽນ"

## ອຸປະມາ ໓ ຂໍ້

[໓໗໔] ອັກຄິເວດສະນະ ຄັ້ງນັ້ນ ອຸປະມາ ໓ ຂໍ້ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນ ໄດ້ຜາກົດແກ່ເຮົາ ຄື

ປຽບເໝືອນ ໄມ້ສົດມີຢາງທີ່ແຊ່ຢູ່ໃນນ້ຳ ບຸຣຸດນຳໄມ້ນັ້ນມາເຮັດໄມ້ສີໄຟດ້ວຍຫວັງວ່າ "ເຮົາຈັກກໍ່ໄຟໃຫ້ເກີດຄວາມຮ້ອນຂຶ້ນ"

ອັກຄິເວດສະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ ບຸຣຸດນັ້ນນຳໄມ້ສົດທີ່ມີຢາງເຊິ່ງແຊ່ຢູ່ໃນນ້ຳມາເຮັດໄມ້ສີໄຟແລ້ວສີໃຫ້ເປັນໄຟຈັກເກີດຄວາມຮ້ອນຂຶ້ນໄດ້ບໍ?"

"ບໍ່ໄດ້ ພຣະໂຄດົມຜູ້ຈະເລີນ"
"ຂໍ້ນັ້ນຍ້ອນເຫດໃດ?"

"ພຣະໂຄດົມຜູ້ຈະເລີນ ຍ້ອນໄມ້ສົດນັ້ນມີຢາງ ແລະຖືກແຊ່ຢູ່ໃນນ້ຳ ບຸຣຸດນັ້ນກໍມີແຕ່ຄວາມເມື່ອຍລ່າລຳບາກເປົ່າ"

"ອັກຄິເວດສະນະ ຢ່າງນັ້ນຄືກັນ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ມີກາຍແລະຈິດຍັງບໍ່ຫຼີກອອກຈາກກາມ ຍັງມີຄວາມພໍໃຈ ຄວາມຮັກແພງ ຄວາມຫຼົງ ຄວາມຢາກ ແລະຄວາມກະວົນກະວາຍໃນກາມທັງຫຼາຍ ຍັງບໍ່ໄດ້ລະແລະບໍ່ໄດ້ລະງັບຢ່າງເດັດຂາດໃນພາຍໃນ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ແມ່ນສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະ ການຕັດສະຮູ້ອັນປະເສີດ ແມ່ນບໍ່ໄດ້ສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະ ການຕັດສະຮູ້ອັນປະເສີດ

ນີ້ເປັນອຸປະມາຂໍ້ທີ ໑ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນໄດ້ຜາກົດຂຶ້ນແກ່ເຮົາ

[໓໗໕] ປຽບເໝືອນ ໄມ້ສົດມີຢາງທີ່ວາງຢູ່ເທິງບົກຫ່າງຈາກນ້ຳ ບຸຣຸດນຳໄມ້ນັ້ນມາເຮັດໄມ້ສີໄຟດ້ວຍຫວັງວ່າ "ເຮົາຈັກກໍ່ໄຟໃຫ້ເກີດຄວາມຮ້ອນຂຶ້ນ"

ອັກຄິເວດສະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ ບຸຣຸດນັ້ນ ເມື່ອນຳໄມ້ສົດທີ່ມີຢາງ ເຊິ່ງວາງຢູ່ເທິງບົກຫ່າງຈາກນ້ຳ ມາເຮັດເປັນໄມ້ສີໄຟແລ້ວສີໃຫ້ເປັນໄຟຈັກເກີດຄວາມຮ້ອນຂຶ້ນໄດ້ຫຼືບໍ່?"

"ບໍ່ໄດ້ ພຣະໂຄດົມຜູ້ຈະເລີນ"

"ຂໍ້ນັ້ນຍ້ອນເຫດໃດ?"

"ພຣະໂຄດົມຜູ້ຈະເລີນ ຍ້ອນໄມ້ຍັງສົດແລະມີຢາງ ແມ່ນຈະວາງຢູ່ເທິງບົກຫ່າງຈາກນ້ຳຢູ່ກໍຕາມ ບຸຣຸດນັ້ນ ກໍມີແຕ່ຄວາມເມື່ອຍລ່າລຳບາກເປົ່າ"

"ອັກຄິເວດສະນະ ເປັນຢ່າງນັ້ນຄືກັນ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງແມ່ນມີກາຍ ແລະຈິດຫຼີກອອກຈາກກາມແລ້ວ ແຕ່ຍັງມີຄວາມພໍໃຈ ຄວາມຮັກແພງ ຄວາມຫຼົງ ຄວາມຢາກ ແລະຄວາມກະວົນກະວາຍໃນກາມທັງຫຼາຍ ຍັງບໍ່ໄດ້ລະແລະບໍ່ໄດ້ລະງັບຢ່າງເດັດຂາດໃນພາຍໃນ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ແມ່ນສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະ ການຕັດສະຣູ້ອັນປະເສີດ ແມ່ນບໍ່ໄດ້ສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະ ການຕັດສະຣູ້ອັນປະເສີດ

ນີ້ເປັນອຸປະມາຂໍ້ທີ ໒ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນໄດ້ຜາກົດຂຶ້ນແກ່ເຮົາ

[໓໗໖] ປຽບເໝືອນ ໄມ້ທີ່ແຫ້ງແຈບເຊິ່ງວາງຢູ່ເທິງບົກຫ່າງຈາກນ້ຳ ບຸຣຸດນຳມາເຮັດເປັນໄມ້ສີໄຟດ້ວຍຫວັງວ່າ "ເຮົາຈັກກໍ່ໄຟໃຫ້ເກີດຄວາມຮ້ອນຂຶ້ນ"

ອັກຄິເວດສະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ? ບຸຣຸດນັ້ນ ນຳໄມ້ທີ່ແຫ້ງແຈບເຊິ່ງວາງຢູ່ເທິງບົກຫ່າງຈາກນ້ຳມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟເກີດຄວາມຮ້ອນຂຶ້ນໄດ້ຫຼືບໍ່?"

"ໄດ້ ພຣະໂຄດົມຜູ້ຈະເລີນ"

"ຂໍ້ນັ້ນຍ້ອນເຫດໃດ?"

"ພຣະໂຄດົມຜູ້ຈະເລີນ ຍ້ອນໄມ້ແຫ້ງແຈບ ແລະວາງຢູ່ເທິງບົກຫ່າງຈາກນ້ຳ"

"ອັກຄິເວດສະນະ ເປັນຢ່າງນັ້ນຄືກັນ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ມີກາຍແລະຈິດຫຼີກອອກຈາກກາມແລ້ວ ທັງລະແລະລະງັບຄວາມພໍໃຈ ຄວາມຮັກແພງ ຄວາມຫຼົງ ຄວາມຢາກ ແລະຄວາມກະວົນກະວາຍໃນກາມທັງຫຼາຍໄດ້ຢ່າງເດັດຂາດ ໃນພາຍໃນແລ້ວ ສະມະນະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ແມ່ນສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນ

ຍ້ອນຄວາມພຽນ ກໍເປັນຜູ້ຄວນແກ່ການຮູ້ ການເຫັນ ແລະ ການ ຕັດສະຮູ້ອັນປະເສີດ ແມ່ນບໍ່ໄດ້ສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ຄວນແກ່ການຮູ້ ການເຫັນ ແລະ ການຕັດສະຮູ້ອັນປະເສີດ

ນີ້ເປັນອຸປະມາຂໍ້ທີ ໓ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນໄດ້ຜາກົດຂຶ້ນແກ່ເຮົາ

ອັກຄິເວດສະນະ ນີ້ຄືອຸປະມາ ໓ ຂໍ້ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນ ໄດ້ຜາກົດຂຶ້ນແກ່ເຮົາແລ້ວ

## ການພ່ຳເພັງທຸກກະຣະກິຣິຍາ

[໓໗໗] ອັກຄິເວດສະນະ ເຮົານັ້ນມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ" ເຮົານັ້ນກໍກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ເມື່ອເຮົາເຮັດດັ່ງນັ້ນ ເຫື່ອກໍໄຫຼອອກຈາກຂີ້ແຮ້ທັງ ໔ ຂ້າງ ຄົນທີ່ແຂງແຮງຈັບຄົນທີ່ອ່ອນແອກວ່າທີ່ຫົວຫຼືທີ່ຄໍແລ້ວ ບີບຄັ້ນຮັດໄວ້ໃຫ້ແໜ້ນ ແມ່ນສັນໃດ ເຮົາກໍຄືກັນສັນນັ້ນ ເມື່ອກັດເນັ້ນແຂ້ວ ໃຊ້ລີ້ນດັນ ເພດານໄວ້ແໜ້ນໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ເຫື່ອກໍໄຫຼອອກຈາກຂີ້ແຮ້ທັງ ໔ ຂ້າງ ເຮົາຜາຣົບຄວາມພຽນບໍ່ຫຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ ແມ່ນທຸກຂະເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາທົນຢູ່ບໍ່ໄດ້

[໓໗໘] ອັກຄິເວດສະນະ ເຮົາຈຶ່ງມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນພ່ຳເພັງຊານອັນບໍ່ມີລົມຫັນໃຈເທີ້ນ" ເຮົາກໍກັ້ນລົມຫາຍໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ແລະ ທາງດັງເມື່ອເຮົາກັ້ນລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ແລະ ທາງດັງ ລົມກໍອອກທາງຫູທັງ ໔ ຂ້າງ ມີສຽງດັ່ງອູ້ ໆ ລົມທີ່ຊ່າງທອງສູບຢູ່ມີສຽງດັ່ງອູ້ ໆ ແມ່ນສັນໃດ ເມື່ອເຮົາກັ້ນລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ແລະ ທາງດັງ ລົມກໍອອກທາງຫູທັງ ໔ ຂ້າງ ມີສຽງດັ່ງອູ້ ໆ ຄືກັນສັນນັ້ນ

ເຮົາຜາຣົບຄວາມພຽນບໍ່ຫຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽບແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ ແມ່ນທຸກຂະເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາທົນຢູ່ບໍ່ໄດ້

ເຮົາຈຶ່ງມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນພ່ຳເພັງຊານອັນບໍ່ມີລົມຫັນໃຈເທີ້ນ" ເຮົາກໍ

ກັ້ນລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ເມື່ອເຮົາກັ້ນລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ລົມອັນແຮງກ້າກໍສຽບແທງຫົວ ຄົນທີ່ແຂງແຮງໃຊ້ເຫຼັກທີ່ແຫຼມຄົມແທງຫົວ ແມ່ນສັນໃດ ເມື່ອເຮົາກັ້ນລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ລົມອັນແຮງກ້າ ກໍສຽບແທງຫົວ ຄືກັນສັນນັ້ນ

ເຮົາຜາຣົບຄວາມພຽນບໍ່ທໍ່ຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽບແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ ແມ່ນທຸກຂະເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງໍາຈິດຂອງເຮົາທັນຢູ່ບໍ່ໄດ້

ເຮົາຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພ່ໍາເພັງຊານອັນບໍ່ມີລົມຫັນໃຈເທີ້ນ" ເຮົາກໍກັ້ນ ລົມຫັນໃຈເຂົ້າແລະລົມຫັນໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ເມື່ອເຮົາກັ້ນ ລົມຫາຍໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ກໍມີທຸກຂະເວທະນາໃນຫົວຢ່າງແຮງກ້າ ຄົນທີ່ແຂງແຮງໃຊ້ເຊືອກໜັງທີ່ໜຽວຂັນຫົວ ແມ່ນສັນໃດ ເມື່ອເຮົາ ກັ້ນລົມຫາຍໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູກໍມີທຸກຂະເວທະນາໃນຫົວແນວແຮງກ້າ ຄືກັນສັນນັ້ນ

ເຮົາຜາຣົບຄວາມພຽນບໍ່ທໍ່ຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽບແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ ແມ່ນທຸກຂະເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງໍາຈິດຂອງເຮົາທົນຢູ່ບໍ່ໄດ້

ເຮົາຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພ່ໍາເພັງຊານອັນບໍ່ມີລົມຫັນໃຈເທີ້ນ" ເຮົາກໍກັ້ນລົມຫາຍໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ເມື່ອເຮົາກັ້ນລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ລົມອັນແຮງກ້າ ກໍບາດໃນບໍລິເວນທ້ອງ ຄົນຂ້າງົວ ຫຼື ລູກມືຂອງຄົນຂ້າງົວຜູ້ຊ່ຽວຊານ ໃຊ້ມີດປາດຊີ້ນທີ່ຄົມຂີດທ້ອງ ແມ່ນສັນໃດ ເມື່ອເຮົາກັ້ນລົມຫາຍໃຈເຂົ້າ ແລະ ລົມຫາຍໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ກໍມີລົມອັນແຮງກ້າບາດໃນບໍລິເວນທ້ອງ ຄືກັນສັນນັ້ນ

ເຮົາຜາຣົບຄວາມພຽນບໍ່ທໍ່ຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽບແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ ແມ່ນທຸກຂະເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງໍາຈິດຂອງເຮົາທົນຢູ່ບໍ່ໄດ້

ເຮົາຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພ່ໍາເພັງຊານອັນບໍ່ມີລົມຫັນໃຈເທີ້ນ" ເຮົາກໍກັ້ນລົມຫາຍໃຈເຂົ້າ ແລະ ລົມຫາຍໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ເມື່ອເຮົາກັ້ນ

ລົມຫາຍໃຈເຂົ້າ ແລະ ລົມຫາຍໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ກໍມີຄວາມກະວົນກະວາຍໃນຮ່າງກາຍອັນແຮງກ້າ ປຽບເໝືອນ ຄົນທີ່ແຂງແຮງ ໔ ຄົນຈັບແຂນຄົນທີ່ອ່ອນແອກວ່າຄົນລະຂ້າງຈີໃຫ້ຮ້ອນເທິງຂຸມຖ່ານໄຟ ແມ່ນສັນໃດ໌ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກທັງທາງປາກ ທາງດັງ ແລະ ທາງຮູຫູ ກໍມີຄວາມກະວົນກະວາຍໃນຮ່າງກາຍຢ່າງແຮງກ້າ ຄືກັນສັນນັ້ນ

ເຮົາຜາຣົບຄວາມພຽນບໍ່ທໍ່ຍອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽບແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ ແມ່ນທຸກຂະເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາທົນຢູ່ບໍ່ໄດ້

ເທວະດາທັງຫຼາຍເຫັນເຮົາແລ້ວກໍພາກັນກ່າວແນວນີ້ວ່າ “ພຣະສະມະນະໂຄດົມສິ້ນພະຊົນແລ້ວ” ລາງພວກກ່າວແນວນີ້ວ່າ “ພຣະສະມະນະໂຄດົມຍັງບໍ່ໄດ້ສິ້ນພະຊົນ ແຕ່ກຳລັງຈະສິ້ນພະຊົນ” ລາງພວກກ່າວແນວນີ້ວ່າ “ພຣະສະມະນະໂຄດົມຍັງບໍ່ສິ້ນພະຊົນ ແລະຈະບໍ່ສິ້ນພະຊົນ ພຣະສະມະນະໂຄດົມຈະເປັນພຣະອະຣະຫັນ ການຢູ່ແນວນີ້ນັ້ນເປັນວິຫານທຳ໌ ຂອງທ່ານຜູ້ເປັນພຣະອະຣະຫັນ”

[๓໘໙] ອັກຄິເວດສະນະ ເຮົາຈຶ່ງມີຄວາມດຳຣິວ່າ “ທາງທີ່ດີ ເຮົາຄວນປະຕິບັດດ້ວຍການອົດອາຫານທຸກຢ່າງ” ຂະນະນັ້ນ ເທວະດາທັງຫຼາຍເຂົ້າມາຫາເຮົາແລ້ວກ່າວວ່າ “ຂ້າແດ່ ທ່ານຜູນິຣະທຸກ ທ່ານຢ່າໄດ້ປະຕິບັດດ້ວຍການອົດອາຫານທຸກຢ່າງເລີຍ ຖ້າທ່ານຈັກປະຕິບັດດ້ວຍການອົດອາຫານທຸກຢ່າງ ຂ້າພະເຈົ້າທັງຫຼາຍ ຈະແຊກໂອຊາອັນເປັນທິບເຂົ້າທາງຂຸມຂົນຂອງທ່ານ ທ່ານຈະໄດ້ຍັງອັດຕະພາບໃຫ້ເປັນໄປດ້ວຍໂອຊານັ້ນ” ເຮົາຈຶ່ງມີຄວາມດຳຣິວ່າ “ເຮົາປະຕິຍານວ່າ ຈະຕ້ອງອົດອາຫານທຸກຢ່າງ ແຕ່ເທວະດາເຫຼົ່ານີ້ຈະແຊກໂອຊາອັນເປັນທິບເຂົ້າທາງຂຸມຂົນຂອງເຮົາ ເຮົາຈະຍັງອັດຕະພາບໃຫ້ເປັນໄປດ້ວຍໂອຊານັ້ນ ການປະຕິຍານນັ້ນ ກໍຈະເພິ່ງເປັນມຸສາແກ່ເຮົາ” ເຮົາຈຶ່ງກ່າວຫ້າມເທວະດາເຫຼົ່ານັ້ນວ່າ “ຢ່າເລີຍ”

[๓໙໐] ອັກຄິເວດສະນະ ເຮົາມີຄວາມດຳຣິວ່າ “ທາງທີ່ດີ ເຮົາຄວນກິນອາຫານໃຫ້ໜ້ອຍລົງເລື່ອຍ ໆ ພຽງຄັ້ງລະ ໑ ຟາຍມືແດ່ ທີ່ເຍື່ອໃນເມັດຖົ່ວຂຽວແດ່ ທີ່ເຍື່ອໃນເມັດຖົ່ວພູແດ່ ທີ່ເຍື່ອໃນເມັດຖົ່ວດຳແດ່ ທີ່ເຍື່ອໃນເມັດບົວແດ່” ເຮົາຈຶ່ງກິນອາຫານ ໜ້ອຍລົງເລື່ອຍ ໆ ພຽງເທື່ອລະ ໑ ຟາຍມືແດ່ ທີ່ເຍື່ອໃນເມັດຖົ່ວຂຽວແດ່ ທີ່ເຍື່ອໃນເມັດຖົ່ວພູແດ່ ທີ່ເຍື່ອໃນເມັດຖົ່ວດຳແດ່ ທີ່ເຍື່ອໃນເມັດບົວແດ່ ເມື່ອເຮົາກິນອາຫານ ໃຫ້ໜ້ອຍລົງ ໆ ພຽງຄັ້ງລະ ໑ ຟາຍມືແດ່ ທີ່ເຍື່ອໃນເມັດຖົ່ວຂຽວແດ່ ທີ່ເຍື່ອໃນເມັດຖົ່ວພູແດ່ ທີ່ເຍື່ອໃນເມັດຖົ່ວດຳແດ່ ທີ່ເຍື່ອໃນເມັດບົວແດ່” ກາຍກໍຈ່ອຍແຫ້ງລົງ ອະໄວຍະວະນ້ອຍໃຫຍ່ຂອງເຮົາຈຶ່ງເປັນເໝືອນເຄືອເຂົາທີ່ມີຂໍ້ຫຼາຍຫຼືເຄືອເຂົາທີ່ມີຂໍ້ດຳ ຊີ້ນສະໂພກກໍລີບເໝືອນກີບຕີນອູດ ກະດູກສັນຫຼັງກໍຜຸດເປັນໜາມເໝືອນເຄືອເຂົາ

ຊີ່ໂຄງ ທັງ ໘ ຂ້າງ ຜຸດຂຶ້ນສະພັ່ງ ເໝືອນກອນສາລາເກົ່າ ດວງຕາທັງ ໘ ຂ້າງກໍເລິກເຂົ້າໄປໃນເບົ້າຕາ ເໝືອນດວງດາວຜາກົດຢູ່ໃນນ້ຳສ້າງເລິກ ໜັງເທິງຫົວກໍຫ່ຽວຫົດເໝືອນລູກນ້ຳເຕົ້າທີ່ເຂົາຕັດມາຕອນຍັງດິບຢູ່ ເມື່ອຕ້ອງລົມແລະແດດເຂົ້າກໍຫ່ຽວຫົດໄປ ຍ້ອນເປັນຜູ້ມີອາຫານໜ້ອຍນັ້ນ ເຮົາຄິດວ່າ "ຈະລູບໜັງທ້ອງ" ກໍຈັບເຖິງກະດູກສັນຫຼັງ ຄິດວ່າ "ຈະລູບກະດູກສັນຫຼັງ" ກໍຈັບເຖິງໜັງທ້ອງ ຍ້ອນໜັງທ້ອງຂອງເຮົາແນບຕິດຈົນເຖິງກະດູກສັນຫຼັງ ເຮົາຄິດວ່າ "ຈະຖ່າຍອຸດຈາຣະ ຫຼື ຖ່າຍປັດສາວະ" ກໍຊວນເຊລົ້ມລົງໃນທີ່ນັ້ນ ເມື່ອຈະໃຫ້ກາຍສະບາຍແດ່ ຈຶ່ງໃຊ້ຝາມືລູບຕົວ ຂົນທັງຫຼາຍທີ່ມີຮາກເນົ່າກໍລຸດຕົກລົງຈາກກາຍ ຍ້ອນເປັນຜູ້ມີອາຫານໜ້ອຍ ມະນຸດທັງຫຼາຍເຫັນເຮົາແລ້ວ ກໍກ່າວແນວນີ້ວ່າ "ພຣະສະມະນະໂຄດົມດຳໄປ" ລາງພວກກໍກ່າວແນວນີ້ວ່າ "ພຣະສະມະນະໂຄດົມບໍ່ດຳພຽງແຕ່ແຫຼ້ໄປ" ລາງພວກກໍກ່າວວ່າ "ບໍ່ດຳ ບໍ່ແຫຼ້ ພຽງແຕ່ກະດ່າງກະດາວໄປ" ເຮົາມີຜິວພັນບໍລິສຸດ ພຸດຜ່ອງ ພຽງແຕ່ເສຍຜິວໄປ ຍ້ອນເປັນຜູ້ມີອາຫານໜ້ອຍທໍ່ນັ້ນ

[໓໗໑] ອັກຄິເວດສະນະ ເຮົານັ້ນມີຄວາມດຳຣິວ່າ "ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດສະເຫວີຍທຸກຂະເວທະນາກ້າແຂງ ຫຍາບ ເຜັດຮ້ອນ ທີ່ເກີດຂຶ້ນຍ້ອນຄວາມພຽນ ທຸກຂະເວທະນານັ້ນຢ່າງຍິ່ງກໍພຽງທໍ່ນີ້ບໍ່ເກີນກວ່ານີ້ໄປ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ໃນອະນາຄົດສະເຫວີຍທຸກຂະເວທະນາກ້າແຂງ ຫຍາບ ເຜັດຮ້ອນ ທີ່ເກີດຂຶ້ນຍ້ອນຄວາມພຽນ ທຸກຂະເວທະນານັ້ນຢ່າງຍິ່ງກໍພຽງທໍ່ນີ້ບໍ່ເກີນໄປກວ່ານີ້ໄດ້ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນສະເຫວີຍທຸກຂະເວທະນາກ້າແຂງ ຫຍາບ ເຜັດຮ້ອນ ທີ່ເກີດຂຶ້ນຍ້ອນຄວາມພຽນ ທຸກຂະເວທະນານັ້ນຢາງຍິ່ງກໍພຽງທໍ່ນີ້ບໍ່ເກີນໄປກວ່ານີ້ໄດ້ ແຕ່ເຮົາກໍຍັງບໍ່ໄດ້ບັນລຸ ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ດ້ວຍທຸກກອນກິຣິຍາອັນເຜັດຮ້ອນນີ້ ຈະເພິ່ງມີທາງອື່ນທີ່ຈະຕັດສະຣູ້ແດ່ບໍ່?"

ເຮົາຈຶ່ງມີຄວາມດຳຣິວ່າ "ເຮົາຈື່ໄດ້ຢູ່ ເມື່ອເວລາງານຂອງທ້າວຈັກກາທິບໍດີເຊິ່ງເປັນພຣະຣາຊະບິດາ ເຮົານັ່ງຢູ່ໃຕ້ຕົ້ນຫວ້າອັນຮົ່ມເຢັນ ໄດ້ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ທາງນັ້ນເພິ່ງເປັນທາງແຫ່ງ ການຕັດສະຣູ້ຫຼືໜໍ" ເຮົາມີຄວາມຮູ້ແຈ້ງທີ່ຕາມຣະນຶກດ້ວຍສະຕິວ່າ "ທາງນັ້ນເປັນທາງແຫ່ງການ ຕັດສະຣູ້" ເຮົາຈຶ່ງມີຄວາມດຳຣິວ່າ "ເຮົາຢ້ານຄວາມສຸກທີ່ເວັ້ນຈາກກາມແລະອະກຸສົນທຳທັງຫຼາຍ ບໍ" ເຮົາກໍດຳຣິວ່າ "ເຮົາບໍ່ໄດ້ຢ້ານຄວາມສຸກທີ່ເວັ້ນຈາກກາມ ແລະ ອະກຸສົນທຳທັງຫຼາຍເລີຍ"

[໓໗໘] ອັກຄິເວດສະນະ ເຮົາຈຶ່ງມີຄວາມດຳຣິຕໍ່ໄປວ່າ "ເຮົາຜູ້ມີກາຍຈ່ອຍແຫ້ງຫຼາຍຢູ່ແນວນີ້ ຈະບັນລຸຄວາມສຸກນັ້ນບໍ່ແມ່ນເຮັດໄດ້ງ່າຍເລີຍ ທາງທີ່ດີ ເຮົາຄວນກິນອາຫານຫຍາບ ຄືເຂົ້າສຸກ ແລະ ເຂົ້າໜົມກຸມມາດ" ເຮົາກໍກິນອາຫານຫຍາບ ຄື ເຂົ້າສຸກ ແລະ ເຂົ້າໜົມກຸມມາດ

ຄັ້ງນັ້ນ ພິກຂຸປັນຈະວັກຄີທີ່ເຝົ້າບຳລຸງເຮົາດ້ວຍຫວັງວ່າ "ພຣະສະມະນະໂຄດົມບັນລຸທຳໃດ ຈັກບອກທຳນັ້ນແກ່ພວກເຮົາທັງຫຼາຍ" ເມື່ອໃດ ເຮົາກິນອາຫານຫຍາບ ຄື ເຂົ້າສຸກແລະເຂົ້າໜົມກຸມມາດ ເມື່ອນັ້ນ ພິກຂຸປັນຈະວັກຄີນັ້ນ ກໍເບື່ອໜ່າຍຈາກໄປດ້ວຍເຂົ້າໃຈວ່າ "ພຣະສະມະນະໂຄດົມກັບມາມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຜູ້ມັກຫຼາຍເສຍແລ້ວນໍ"

## ຊານ ໔ ແລະ ວິດຊາ ໓

[໓໗໓] ອັກຄິເວດສະນະ ເຮົາກິນອາຫານຫຍາບໃຫ້ຮ່າງກາຍມີກຳລັງ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປິຕິ ແລະ ສຸກອັນເກີດຈາກວິເວກຢູ່ ແມ່ນສຸກເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາຢູ່ບໍ່ໄດ້

ຍ້ອນວິຕົກວິຈານສະງົບລະງັບໄປ ເຮົາບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິ ແລະ ສຸກອັນເກີດຈາກສະມາທິຢູ່ແມ່ນສຸກເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາຢູ່ບໍ່ໄດ້

ຍ້ອນປິຕິຈາງຄາຍອອກ ເຮົາມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ແມ່ນສຸກເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາຢູ່ບໍ່ໄດ້

ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນແລ້ວ ເຮົາບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ແມ່ນສຸກເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາຢູ່ບໍ່ໄດ້

[໓໗໔] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ເຮົານັ້ນ ນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ເຮົາຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້ ເຮົາໄດ້ບັນລຸວິດຊາທີ ໑ ນີ້ ໃນປະຖົມຍາມແຫ່ງຣາຕີ ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ເໝືອນບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນອຸທິດກາຍແລະໃຈຢູ່ ແມ່ນສຸກເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາຢູ່ບໍ່ໄດ້

[໓໗໕] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ເຮົານັ້ນນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ

ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ນລາ໗ ເຮົາໄດ້ບັນລຸວິດຊາທີ ໔ ນີ້ໃນມັດຊິມະຍາມແຫ່ງຣາຕີ

ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ເໝືອນບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ແມ່ນສຸກເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາຢູ່ບໍ່ໄດ້

[໓໗໒] ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ເຮົານັ້ນ ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣທະຄາມິນີປະຕິປະທາ" ເມື່ອເຮົາຮູ້ເຫັນຢູ່ແນວນີ້ ຈິດກໍລຸດພົ້ນຈາກກາມາສະຫວະ ພະວາສະວະ ແລະ ອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ອັກຄິເວດສະນະ ເຮົາບັນລຸວິດຊາທີ ໓ ນີ້ ໃນປັດສິມຍາມແຫ່ງຣາຕີ ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ເໝືອນບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ແມ່ນສຸກເວທະນາທີ່ເກີດຂຶ້ນເຊັ່ນນັ້ນ ກໍຄອບງຳຈິດຂອງເຮົາຢູ່ບໍ່ໄດ້

## ບຸກຄົນຜູ້ບໍ່ຫຼົງ

[໓໗໓] ອັກຄິເວດສະນະ ເຮົາຮູ້ຢູ່ວ່າ ເມື່ອເຮົາສະແດງທຳແກ່ບໍລິສັດຫຼາຍຮ້ອຍບໍລິສັດ ເຖິງແມ່ນບຸກຄົນໜຶ່ງ ໆ ຈະເຂົ້າໃຈເຮົາແນວນີ້ວ່າ "ພຣະສະມະນະໂຄດົມສະແດງທຳຟາຣົບເຮົາທໍ່ນັ້ນ" ທ່ານຢ່າເພິ່ງເຫັນຢ່າງນັ້ນ ຕະຖາຄົດຍ່ອມສະແດງທຳແກ່ບຸກຄົນເຫຼົ່າອື່ນໂດຍຊອບ ເພື່ອປະໂຫຍດໃຫ້ຮູ້ແຈ້ງຢ່າງດຽວ ແລະ ໃນຕອນຈົບເລື່ອງໜຶ່ງ ໆ ເຮົາປະຄອງຈິດໃຫ້ສະງົບ ຕັ້ງໝັ້ນ ເປັນສະມາທິພາຍໃນ ດຳລົງຢູ່ໃນສະມາທິນິມິດເບື້ອງຕົ້ນນັ້ນ ຕະຫຼອດນິຕະຍະການ"

"ຂໍ້ນີ້ ຄວນເຊື່ອທ່ານພຣະໂຄດົມ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ແຕ່ທ່ານພຣະໂຄດົມຮູ້ດີຢູ່ຫຼືວ່າ "ພຣະອົງເປັນຜູ້ຈື່ວັດໃນເວລາກາງເວັນ"

"ອັກຄິເວດສະນະ ເຮົາຮູ້ຢູ່ວ່າ "ໃນເດືອນທ້າຍແຫ່ງລະດູຮ້ອນ ເຮົາກັບຈາກບິນທະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ປູສັງຄາຕິໃຫ້ເປັນ ໔ ຊັ້ນ ມີສະຕິສຳປະຊັນຍະນອນສະແດງຂ້າງເບື້ອງຂວາ"

"ທ່ານພຣະໂຄດົມຜູ້ຈະເລີນ ສະມະນະພາມພວກໜຶ່ງກ່າວວ່າ ການປະຕິບັດແບບນັ້ນເປັນການຢູ່ດ້ວຍຄວາມຫຼົງ"

"ອັກຄິເວດສະນະ ບຸກຄົນເປັນຜູ້ຫຼົງ ຫຼື ບໍ່ຫຼົງດ້ວຍເຫດພຽງທີ່ນັ້ນຫາບໍ່ໄດ້ ບຸກຄົນເປັນຜູ້ຫຼົງຫຼືເປັນຜູ້ບໍ່ຫຼົງດ້ວຍເຫດໃດ ທ່ານຈົ່ງຟັງເຫດນັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ສັດຈະກະ ນິຄົນຖະບຸດທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

[໓໘໘] "ອັກຄິເວດສະນະ ອາສະວະທັງຫຼາຍອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ໃຫ້ເກີດຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດຊະຣາ ແລະ ມໍລະນະຕໍ່ໄປ ບຸກຄົນຜູ້ໃດຜູ້ໜຶ່ງຍັງລະບໍ່ໄດ້ ເຮົາຮຽກບຸກຄົນນັ້ນວ່າ "ຜູ້ຫຼົງ" ບຸກຄົນນັ້ນ ເປັນຜູ້ຫຼົງຍ້ອນຍັງລະອາສະວະທັງຫຼາຍບໍ່ໄດ້

ອາສະວະທັງຫຼາຍ ອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ແລະ ມໍລະນະຕໍ່ໄປ ບຸກຄົນຜູ້ໃດຜູ້ໜຶ່ງລະໄດ້ແລ້ວ ເຮົາຮຽກບຸກຄົນນັ້ນວ່າ "ຜູ້ບໍ່ຫຼົງ" ບຸກຄົນນັ້ນ ເປັນຜູ້ບໍ່ຫຼົງຍ້ອນລະອາສະວະທັງຫຼາຍໄດ້ແລ້ວ

ຕະຖາຄົດ ລະອາສະວະທັງຫຼາຍອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ແລະ ມໍລະນະຕໍ່ໄປໄດ້ແລ້ວ ຕັດຮາກ ຖອນໂຄນ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນອີກຕໍ່ໄປບໍ່ໄດ້

ອັກຄິເວດສະນະ ຕົ້ນຕານທີ່ຖືກຕັດຍອດແລ້ວ ບໍ່ອາດງອກຂຶ້ນອີກໄດ້ ແມ່ນສັນໃດ ຕະຖາຄົດ ກໍຄືກັນສັນນັ້ນ ລະອາສະວະທັງຫຼາຍອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດຊະຣາ ແລະ ມໍລະນະຕໍ່ໄປໄດ້ແລ້ວ ຕັດຮາກ ຖອນໂຄນ ເໝືອນຕົ້ນຕານທີ່ຖືກຕັດຮາກຖອນໂຄນໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນ ຕໍ່ໄປບໍ່ໄດ້"

## ສັດຈະກະນິຄົນຖະບຸດສັນເສີນພຣະພຸດທະເຈົ້າ

[໓໘໙] ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ແລ້ວ ສັດຈະກະນິຄົນຖະບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ໜ້າອັດສະຈັນຈິງແທ້ ບໍ່ເຄີຍຜາກົດພຣະໂຄດົມຜູ້ຈະເລີນ ຜູ້ທີ່ຂ້າພະເຈົ້າມາສົນທະນາກະທົບ ແລະ ໄຕ່ຖາມດ້ວຍຄຳທີ່ປຸງແຕ່ງ ມາຢ່າງນີ້ ກໍຍັງມີພຣະສະວີວັນຜ່ອງໃສ ທັງມີພຣະພັກພຸດຜ່ອງ ຍ້ອນທ່ານເປັນພຣະອະຣະຫັນຕະ

ສຳມາສຳພຸດທະເຈົ້າ ຂ້າພະເຈົ້າຈື່ໄດ້ວ່າ ຂ້າພະເຈົ້າເປັນຜູ້ເລີ່ມໂຕ້ວາທະກັບທ່ານປູຣະນະກັດສະປະ ແມ່ນທ່ານປູຣະນະກັດສະປະນັ້ນ ເລີ່ມໂຕ້ວາທະກັບຂ້າພະເຈົ້າ ກໍນຳເລື້ອງອື່ນມາເວົ້າປົກປິດເສຍແລະຊັກນຳໃຫ້ເວົ້າອອກນອກເລື້ອງ ທັງທຳຄວາມຄຽດ ແລະ ຄວາມບໍ່ພໍໃຈໃຫ້ຜາກົດ ຂ້າພະເຈົ້າຈື່ໄດ້ວ່າ ຂ້າພະເຈົ້າເປັນຜູ້ເລີ່ມໂຕ້ວາທະກັບທ່ານມັກຂະລິ ໂຄສາລະ ຯລຯ ທ່ານອະຊິຕະເກສະກຳພົນ ຯລຯ ທ່ານປະກຸທະ ກັດຈາຍະນະ ຯລຯ ທ່ານສັນຊັຍເວລັດຖະບຸດ ຯລຯ ທ່ານນິຄົນ ນາຕະບຸດ"໑ ແມ່ນທ່ານນິຄົນ ນາຕະບຸດນັ້ນ ເລີ່ມໂຕ້ວາທະກັບຂ້າພະເຈົ້າ ກໍນຳເລື້ອງອື່ນມາເວົ້າປົກປິດໄວ້ສາ ແລະ ຊັກນຳໃຫ້ເວົ້າອອກນອກເລື້ອງ ທັງສະແດງຄວາມຄຽດແລະຄວາມບໍ່ພໍໃຈໃຫ້ຜາກົດ ສ່ວນພຣະໂຄດົມຜູ້ຈະເລີນຜູ້ທີ່ຂ້າພະເຈົ້າມາສົນທະນາກະທົບແລະໄຕ່ຖາມດ້ວຍຄຳເວົ້າທີ່ປຸງແຕ່ງມາຢ່າງນີ້ ກໍຍັງມີພຣະສະວີວັນ ຜ່ອງໃສ ທັງມີພຣະພັກພຸດຜ່ອງຍ້ອນທ່ານເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ

ຂ້າແດ່ ພຣະໂຄດົມຜູ້ຈະເລີນ ເອົາລະ ບັດນີ້ ຂ້າພະເຈົ້າຂໍທູນລາກັບ ຍ້ອນມີກິດຫຼາຍ ມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ຄັ້ງນັ້ນ ສັດຈະກະ ນິຄົນຖະບຸດຊົມຊື່ນຍິນດີ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າລຸກຈາກອາສະນະແລ້ວຈາກໄປ ດັ່ງນີ້ແລ

**ມະຫາສັດຈະກະສູດທີ ໖ ຈົບ**

# ໗. ຈູລະຕັນຫາສັງຂະຍະສູດ

## ວ່າດ້ວຍຄວາມສິ້ນຕັນຫາ ສູດນ້ອຍ

## ບັນຫາທຳຂອງທ້າວສັກກະ

[໓໙໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຜາສາດຂອງມິຄາຣະມາຕາ ບຸບພາຣາມເຂດນະຄອນສາວັດຖີ ຄັ້ງນັ້ນ ທ້າວສັກກະຈອມເທບ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບຖວາຍອະພິວາດແລ້ວ ໄດ້ປະທັບຢືນຢູ່ໃນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າແນວນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ກ່າວໂດຍຫຍໍ້ ດ້ວຍຂໍ້ປະຕິບັດພຽງທໍ່ໃດ ພິກຂຸຈຶ່ງຊື່ວ່າເປັນຜູ້ລຸດພົ້ນແລ້ວດ້ວຍທຳເປັນທີ່ສິ້ນຕັນຫາ ມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີທີ່ສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາ ແລະມະນຸດທັງຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຈອມເທບ ພິກຂຸໃນທຳວິໄນນີ້ໄດ້ສະດັບວ່າ "ທຳທັງປວງບໍ່ຄວນຢຶດໝັ້ນ" ຖ້າຂໍ້ນັ້ນ ພິກຂຸໄດ້ສະດັບແລ້ວແນວນີ້ວ່າ "ທຳທັງປວງບໍ່ຄວນຢຶດໝັ້ນ" ພິກຂຸນັ້ນຍ່ອມຮູ້ຍິ່ງທຳທັງປວງ ເມື່ອຮູ້ຍິ່ງທຳທັງປວງແລ້ວ ຍ່ອມກຳນົດຮູ້ທຳທັງປວງ ເມື່ອກຳນົດຮູ້ທຳທັງປວງແລ້ວ ທ່ານໄດ້ສະເຫວີຍເວທະນາແນວໃດແນວໜຶ່ງ ສຸກກໍຕາມ ທຸກກໍຕາມ ບໍ່ແມ່ນທຸກບໍ່ແມ່ນສຸກກໍຕາມ ທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ພິຈາລະນາເຫັນຄວາມຄາຍກຳໜັດ ພິຈາລະນາເຫັນຄວາມດັບ ແລະ ພິຈາລະນາເຫັນຄວາມກຳຈັດຖິ້ມໃນເວທະນາທັງຫຼາຍນັ້ນຢູ່ ເມື່ອພິຈາລະນາເຫັນຄວາມບໍ່ທ່ຽງ ພິຈາລະນາເຫັນຄວາມຄາຍກຳໜັດ ພິຈາລະນາເຫັນຄວາມດັບ ແລະພິຈາລະນາເຫັນຄວາມກຳຈັດຖິ້ມໃນເວທະນາທັງຫຼາຍນັ້ນຢູ່ ຍ່ອມບໍ່ຢຶດໝັ້ນອັນໃດ ໆ ໃນໂລກ ເມື່ອບໍ່ຢຶດໝັ້ນ ຍ່ອມບໍ່ສະດຸ້ງຫວາດຫວັ່ນ ເມື່ອບໍ່ສະດຸ້ງຫວາດຫວັ່ນ ຍ່ອມດັບກິເລດໄດ້ສະເພາະຕົນ ແລະ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ"

ຈອມເທບ ກ່າວໂດຍຫຍໍ້ ດ້ວຍຂໍ້ປະຕິບັດທໍ່ນີ້ ພິກຂຸຈຶ່ງຊື່ວ່າ ເປັນຜູ້ລຸດພົ້ນແລ້ວດ້ວຍທຳເປັນທີ່ສິ້ນຕັນຫາ ມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີທີ່ສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາ ແລະ ມະນຸດທັງຫຼາຍ"

ລຳດັບນັ້ນ ທ້າວສັກກະຈອມເທບຊົງຊົມຊື່ນຍິນດີ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກສິນແລ້ວ ອັນຕະຣະທານໄປຈາກທີ່ນັ້ນນັ້ນເອງ

## ພຣະມະຫາໂມກຄັນລານະທົດສອບທ້າວສັກກະ

[໓໙໑] ສະໄໝນັ້ນ ທ່ານພຣະມະຫາໂມກຄັນລານະນັ່ງຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ໄດ້ມີຄວາມຄິດວ່າ "ທ້າວສັກກະນັ້ນ ຮູ້ເນື້ອຄວາມແຫ່ງພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງຍິນດີ ຫຼື ວ່າບໍ່ຮູ້ແລ້ວກໍຍິນດີ ທາງທີ່ດີ ເຮົາຄວນຮູ້ເລື້ອງທີ່ທ້າວສັກກະຈອມເທບຊົງຮູ້ເນື້ອຄວາມແຫ່ງພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວຍິນດີ ຫຼື ວ່າບໍ່ຮູ້ແລ້ວກໍຍິນດີກັນແທ້"

ຈາກນັ້ນ ທ່ານພຣະມະຫາໂມກຄັນລານະ ໄດ້ອັນຕະຣະທານຈາກຜາສາດຂອງມິຄາຣະ

ມາຕາໃນບຸບພາຣາມໄປຜາກົດໃນໝູ່ເທບຊັ້ນຕາວະຕິງສາ ປຽບເໝືອນ ຄົນແຂງແຮງຢຽດແຂນອອກ ຫຼື ຄູ້ແຂນເຂົ້າ ສັນນັ້ນ

ຄັ້ງນັ້ນ ທ້າວສັກກະຈອມເທບ ກໍາລັງເອີບອິ່ມ ພຽບພ້ອມດ້ວຍການປິ່ນເປີຢູ່ດ້ວຍທິບພະຍະດົນຕີ ๕๐๐ ຊະນິດ ໃນສວນດອກບົວຂາວລ້ອມ ພຣະອົງທອດພຣະເນດເຫັນທ່ານພຣະມະຫາໂມກຄັນລານະມາແຕ່ໄກ ຈຶ່ງຮັບສັ່ງໃຫ້ຢຸດບັນເລງທິບພະຍະດົນຕີທັງ ๕๐๐ ຊະນິດໄວ້ ສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະແລ້ວຕັດວ່າ “ນິມົນເຂົ້າມາເທີ້ນ ທ່ານພຣະມະຫາໂມກຄັນລານະ ຜູນິຣະທຸກ ຂໍຕ້ອນຮັບ ດົນ ໆ ທ່ານຈະມີເວລາມາຮອດນີ້ ນິມົນນັ່ງເທິງອາສະນະທີ່ປູລາດໄວ້ເທີ້ນ”

ທ່ານພຣະມະຫາໂມກຄັນລານະນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ສ່ວນທ້າວສັກກະຈອມເທບໄດ້ຊົງເລືອກນັ່ງໃນທີ່ສົມຄວນທີ່ໃດທີ່ໜຶ່ງເຊິ່ງຕໍ່າກວ່າ ທ່ານພຣະມະຫາໂມກຄັນລານະຈຶ່ງທູນຖາມທ້າວສັກກະຈອມເທບວ່າ “ທ້າວໂກສີ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເຖິງຄວາມລຸດພົ້ນດ້ວຍທໍາເປັນທີ່ສິ້ນຕັນຫາໂດຍຫຍໍ້ແກ່ທ່ານໄວ້ແນວໃດ? ຂໍໂອກາດເທີ້ນ ແມ່ນອາຕະມາພາບກໍຈັກຂໍມີສ່ວນໃນການຟັງກະຖານັ້ນດ້ວຍ”

[๓๗๘] ທ້າວສັກກະຕັດຕອບວ່າ “ທ່ານພຣະມະຫາໂມກຄັນລານະ ຂ້າພະເຈົ້າມີກິດຫຼາຍມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ ທັງໜ້າທີ່ສ່ວນຕົວ ແລະ ໜ້າທີ່ຂອງພວກເທບຊັ້ນຕາວະຕິງສາ ພຣະພາສິດໃດທີ່ຂ້າພະເຈົ້າຟັງແລ້ວ ກໍລືມເສຍທັນທີ ພຣະພາສິດນັ້ນ ທ່ານຟັງດີ ຮຽນດີ ໃສ່ໃຈດີແລ້ວ ຊົງຈໍາໄວ້ດີແລ້ວ ເລື້ອງເຄີຍມີມາແລ້ວ ເມື່ອສົງຄາມລະຫວ່າງເທວະດາກັບອະສູນໄດ້ເປີດສຶກກັນແລ້ວ ໃນສົງຄາມນັ້ນ ພວກເທວະດາຊະນະ ພວກອະສູນປຣາໄຊ ຂ້າພະເຈົ້າຊະນະເທວາສຸຣະສົງຄາມສໍາເລັດສິ້ນແລ້ວ ກັບຈາກສົງຄາມນັ້ນແລ້ວ ໄດ້ສ້າງເວຊະຍັນຕະຜາສາດ ເວຊະຍັນຕະຜາສາດມີ ໑໐໐ ຊັ້ນ ໃນຊັ້ນໜຶ່ງ ໆ ມີກູຕາຄາຣະ (ເຮືອນມີຍອດ) ៧໐໐ ຫຼັງ ໃນກູຕາຄາຣະຫຼັງໜຶ່ງ ໆ ມີນາງອັບປະສອນ ៧ ນາງ ນາງອັບປະສອນນາງ ໜຶ່ງ ໆ ມີເທບທິດາຮັບໃຊ້ ៧ ນາງ ທ່ານພຣະມະຫາໂມກຄັນລານະ ທ່ານປາຖະໜາຈະຊົມສະຖານທີ່ໜ້າອອນຊອນແຫ່ງເວຊະຍັນຕະຜາສາດນັ້ນຫຼືບໍ່?”

ທ່ານພຣະມະຫາໂມກຄັນລານະຮັບໂດຍດຸດສະນີພາບ

## ພຣະເຖຣະໃຊ້ນິ້ວຕີນສັ່ນເວຊະຍັນຕະຜາສາດ

[๓๗๙] ຄັ້ງນັ້ນ ທ້າວສັກກະຈອມເທບ ແລະ ທ້າວເວສະວັນມະຫາຣາຊ ນິມົນທ່ານພຣະມະຫາໂມກຄັນລານະໃຫ້ນໍາໜ້າເຂົ້າໄປສູ່ເວຊະຍັນຕະຜາສາດ ພວກເທບທິດາຜູ້ປິ່ນເປີຂອງທ້າວສັກກະເຫັນທ່ານພຣະມະຫາໂມກຄັນລານະມາແຕ່ໄກກໍພາກັນຢ້ານອາຍຢູ່ ຈຶ່ງແຍກເຂົ້າສູ່ຫ້ອງ

ນ້ອຍຂອງຕົນ ເໝືອນຍິງສະໃພ້ເຫັນພໍ່ຜົວແລ້ວກໍຢ້ານອາຍຢູ່ ສັນນັ້ນ

ຈາກນັ້ນ ທ້າວສັກກະຈອມເທບ ແລະ ທ້າວເວສະວັນມະຫາຣາຊ ເມື່ອນິມົນໃຫ້ທ່ານພຣະມະຫາໂມກຄັນລານະທ່ຽວຍ່າງຊົມໄປໃນເວຊະຍັນຕະຜາສາດ ໄດ້ຕັດວ່າ "ທ່ານພຣະມະຫາໂມກຄັນລານະ ຂໍທ່ານຈົ່ງເບິ່ງສະຖານທີ່ທີ່ໜ້າອອນຊອນແຫ່ງເວຊະຍັນຕະຜາສາດນີ້ເທີ້ນ ຂໍທ່ານຈົ່ງເບິ່ງສະຖານທີ່ທີ່ໜ້າອອນຊອນແຫ່ງເວຊະຍັນຕະຜາສາດນີ້ເທີ້ນ"

ທ່ານພຣະມະຫາໂມກຄັນລານະກ່າວວ່າ "ສະຖານທີ່ທີ່ໜ້າອອນຊອນຂອງທ່ານໂກສີນີ້ງົດງາມເໝືອນສະຖານທີ່ຂອງຜູ້ທີ່ໄດ້ທຳບຸນໄວ້ໃນປາງກ່ອນ ແມ່ນມະນຸດທັງຫຼາຍເຫັນສະຖານທີ່ທີ່ໜ້າອອນຊອນອື່ນໃດແລ້ວ ກໍຕ້ອງກ່າວແນວນີ້ວ່າ "ງາມແທ້ ເໝືອນສະຖານທີ່ທີ່ໜ້າອອນຊອນຂອງພວກເທບຊັ້ນດາວະດຶງສາ"

ໃນຂະນະນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ມີຄວາມຄິດວ່າ "ທ້າວສັກກະນີ້ເປັນຜູ້ຜະໝາດຢູ່ແທ້ນໍ ທາງທີ່ດີ ເຮົາຄວນໃຫ້ທ້າວສັກກະນີ້ສັງເວດ" ຈຶ່ງບັນດານອິດທາພິສັງຂານ ໃຊ້ນິ້ວຫົວແມ່ຕີນກົດເວຊະຍັນຕະຜາສາດສັ່ນໃຫ້ສັ່ນສະທ້ານຫວັ່ນໄຫວ ທັນໃດນັ້ນ ທ້າວສັກກະຈອມເທບ ທ້າວເວສະວັນມະຫາຣາຊ ແລະ ພວກເທບຊັ້ນດາວະດຶງສາ ມີຄວາມປະຫລາດມະຫັດສະຈັນໃຈ ກ່າວກັນວ່າ "ທ່ານຜູ້ຈະເລີນທັງຫຼາຍ ໜ້າອັດສະຈັນຈິງແທ້ ບໍ່ເຄີຍຜາກົດ ພຣະສະມະນະມີລິດຫຼາຍ ມີອານຸພາບຫຼາຍ ໃຊ້ນິ້ວຫົວແມ່ຕີນກົດທິບພະຍະໂລກສັ່ນໃຫ້ສັ່ນສະທ້ານຫວັ່ນໄຫວໄດ້"

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະຮູ້ວ່າ "ທ້າວສັກກະຈອມເທບຊົງມີຄວາມສະລົດຈິດຂົນລຸກແລ້ວ" ຈຶ່ງທູນຖາມວ່າ "ທ້າວໂກສີ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຄວາມລຸດພົ້ນດ້ວຍທຳເປັນທີ່ສິ້ນຕັນຫາໂດຍຫຍໍ້ຢ່າງໃດ? ຂໍໂອກາດດ້ວຍເທີ້ນ ແມ່ນອາຕະມາພາບກໍຈັກຂໍມີສ່ວນເພື່ອຟັງກະຖານັ້ນນຳ"

## ຂໍ້ປະຕິບັດເພື່ອຄວາມສິ້ນຕັນຫາ

[໓໙໔] ທ້າວສັກກະຈຶ່ງຕັດວ່າ "ທ່ານພຣະມະຫາໂມກຄັນລານະຜູ້ນິຣະທຸກ ຂ້າພະເຈົ້າຈະເລົ່າຖວາຍ ເມື່ອຂ້າພະເຈົ້າເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບຖວາຍອະພິວາດແລ້ວ ຈຶ່ງໄດ້ຢືນຢູ່ໃນທີ່ສົມຄວນ ແລ້ວໄດ້ທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ກ່າວໂດຍຫຍໍ້ດ້ວຍຂໍ້ປະຕິບັດພຽງທໍ່ໃດ ພິກຂຸຈຶ່ງຊື່ວ່າເປັນຜູ້ລຸດພົ້ນດ້ວຍທຳເປັນທີ່ສິ້ນຕັນຫາ ມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີທີ່ສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາ ແລະ ມະນຸດທັງຫຼາຍ" ເມື່ອຂ້າພະເຈົ້າທູນຖາມຢ່າງນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຈອມເທບ ພິກຂຸໃນທຳວິໄນນີ້ໄດ້ສະດັບມາວ່າ "ທຳທັງປວງບໍ່ຄວນ

ຢຶດໝັ້ນ" ຖ້າຂໍ້ນັ້ນ ພິກຂຸໄດ້ສະດັບແລ້ວແນວນີ້ວ່າ "ທຳທັງປວງບໍ່ຄວນຢຶດໝັ້ນ" ພິກຂຸນັ້ນຍ່ອມຮູ້ຍິ່ງທຳທັງປວງ ເມື່ອຮູ້ຍິ່ງທຳທັງປວງແລ້ວ ຍ່ອມກຳນົດຮູ້ທຳທັງປວງ ເມື່ອກຳນົດຮູ້ທຳທັງປວງແລ້ວ ທ່ານໄດ້ສະເຫວີຍເວທະນາແນວໃດແນວໜຶ່ງ ສຸກກໍຕາມ ທຸກກໍຕາມ ບໍ່ແມ່ນທຸກບໍ່ແມ່ນສຸກກໍຕາມ ທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ພິຈາລະນາເຫັນຄວາມຄາຍກຳໜັດ ພິຈາລະນາເຫັນຄວາມດັບ ແລະ ພິຈາລະນາເຫັນຄວາມກຳຈັດຖິ້ມໃນເວທະນາທັງຫຼາຍນັ້ນຢູ່ ເມື່ອພິຈາລະນາເຫັນຄວາມບໍ່ທ່ຽງ ພິຈາລະນາເຫັນຄວາມຄາຍກຳໜັດ ພິຈາລະນາເຫັນຄວາມດັບ ແລະ ພິຈາລະນາເຫັນຄວາມກຳຈັດຖິ້ມໃນເວທະນາທັງຫຼາຍນັ້ນຢູ່ ຍ່ອມບໍ່ຢຶດໝັ້ນອັນໃດ ໆ ໃນໂລກ ເມື່ອບໍ່ຢຶດໝັ້ນ ຍ່ອມບໍ່ສະດຸ້ງຫວາດຫວັ່ນ ເມື່ອບໍ່ສະດຸ້ງຫວາດຫວັ່ນ ຍ່ອມດັບກິເລດໃຫ້ສະງົບໄດ້ສະເພາະຕົນ ແລະ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ" ຈອມເທບ ກ່າວໂດຍຫຍໍ້ ດ້ວຍຂໍ້ປະຕິບັດພຽງເທົ່ານີ້ ພິກຂຸຈຶ່ງຊື່ວ່າ ເປັນຜູ້ລຸດພົ້ນດ້ວຍທຳເປັນທີ່ສິ້ນຕັນຫາ ມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີທີ່ສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ທ່ານພຣະມະຫາໂມກຄັນລານະ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຄວາມລຸດພົ້ນດ້ວຍທຳເປັນທີ່ສິ້ນຕັນຫາໂດຍຫຍໍ້ ແກ່ຂ້າພະເຈົ້າຢ່າງນີ້"

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະຊົມຊື່ນ ຍິນດີພາສິດຂອງທ້າວສັກກະແລ້ວອັນຕະຣະທານຈາກໝູ່ເທບຊັ້ນຕາວະຕິງສາ ມາຜາກົດທີ່ຜາສາດຂອງມິຄາຣະມາຕາໃນບຸບພາຣາມປຽບເໝືອນຄົນແຂງແຮງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ

ຄັ້ງນັ້ນ ພວກເທບທິດາຜູ້ບີນເປີທ້າວສັກກະຈອມເທບ ເມື່ອທ່ານພຣະມະຫາໂມກຄັນລານະຈາກໄປແລ້ວບໍ່ດົນ ໄດ້ທູນຖາມທ້າວສັກກະຈອມເທບວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ພຣະສະມະນະນັ້ນ ເປັນພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະສາດສະດາຂອງພຣະອົງແມ່ນບໍ?"

ທ້າວສັກກະຕັດຕອບວ່າ "ເຫຼົ່າເທບທິດາຜູ້ນິຣະທຸກ ພຣະສະມະນະນັ້ນ ບໍ່ແມ່ນພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະສາດສະດາຂອງເຮົາ ແຕ່ເປັນທ່ານພຣະມະຫາໂມກຄັນລານະຜູ້ເປັນເພື່ອນພົມມະຈາຣີຂອງເຮົາ"

ພວກເທບທິດາເຫຼົ່ານັ້ນທູນວ່າ "ຂ້າແດ່ ພຣະອົງຜູ້ນິຣະທຸກ ເປັນລາບຂອງພຣະອົງພຣະອົງໄດ້ດີແລ້ວ ທີ່ໄດ້ພຣະສະມະນະຜູ້ມີລິດຫຼາຍ ມີອານຸພາບຫຼາຍຢ່າງນີ້ ເປັນເພື່ອນພົມມະຈາຣີຂອງພຣະອົງ ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະສາດສະດາຂອງພຣະອົງຄົງມີລິດຫຼາຍ ມີອານຸພາບຫຼາຍກວ່ານີ້ຢ່າງແນ່ນອນ"

# ທຳທັງປວງບໍ່ຄວນຍຶດໝັ້ນ

[໓໙໕] ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຮູ້ວ່າ "ພຣະອົງເປັນຜູ້ຕັດຄວາມລຸດພົ້ນດ້ວຍທຳເປັນທີ່ສິ້ນຕັນຫາ ໂດຍຫຍໍ້ແກ່ຈອມເທບຜູ້ມີສັກດາຫຼາຍຜູ້ໃດຜູ້ໜຶ່ງແດ່ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂມກຄັນລານະ ເຮົາຮູ້ຢູ່ຈະເລົ່າໃຫ້ຟັງ ທ້າວສັກກະຈອມເທບເຂົ້າມາຫາເຮົາ ຖວາຍອະພິວາດແລ້ວໄດ້ປະທັບຢືນຢູ່ທີ່ສົມຄວນ ແລ້ວໄດ້ຕັດຖາມເຮົາວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ກ່າວໂດຍຫຍໍ້ ດ້ວຍຂໍ້ປະຕິບັດພຽງທໍ່ໃດ ພິກຂຸຈຶ່ງຊື່ວ່າເປັນຜູ້ລຸດພົ້ນດ້ວຍທຳເປັນທີ່ສິ້ນຕັນຫາ ມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີທີ່ສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ" ເມື່ອທ້າວສັກກະນັ້ນຖາມຢ່າງນີ້ແລ້ວ ເຮົາຕອບວ່າ "ຈອມເທບ ພິກຂຸໃນທຳວິໄນນີ້ໄດ້ສະດັບວ່າ "ທຳທັງປວງບໍ່ຄວນຍຶດໝັ້ນ" ຖ້າຂໍ້ນັ້ນ ພິກຂຸໄດ້ສະດັບແລ້ວແນວນີ້ວ່າ "ທຳທັງປວງບໍ່ຄວນຍຶດໝັ້ນ" ພິກຂຸນັ້ນຍ່ອມຮູ້ຍິ່ງທຳທັງປວງ ເມື່ອຮູ້ຍິ່ງທຳທັງປວງແລ້ວ ຍ່ອມກຳນົດຮູ້ທຳທັງປວງ ເມື່ອກຳນົດຮູ້ທຳທັງປວງແລ້ວ ທ່ານໄດ້ສະເຫວີຍເວທະນາແນວໃດແນວໜຶ່ງ ສຸກກໍຕາມ ທຸກກໍຕາມ ບໍ່ແມ່ນທຸກບໍ່ແມ່ນສຸກກໍຕາມ

ທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ພິຈາລະນາເຫັນຄວາມຄາຍກຳໜັດ ພິຈາລະນາເຫັນຄວາມດັບ ແລະ ພິຈາລະນາເຫັນຄວາມກຳຈັດຖິ້ມໃນເວທະນາທັງຫຼາຍນັ້ນຢູ່ ເມື່ອພິຈາລະນາເຫັນຄວາມບໍ່ທ່ຽງ ພິຈາລະນາເຫັນຄວາມຄາຍກຳໜັດ ພິຈາລະນາເຫັນຄວາມດັບ ແລະພິຈາລະນາເຫັນຄວາມກຳຈັດຖິ້ມໃນເວທະນາທັງຫຼາຍນັ້ນຢູ່ ຍ່ອມບໍ່ຍຶດໝັ້ນອັນໃດໃນໂລກ ເມື່ອບໍ່ຍຶດໝັ້ນຍ່ອມບໍ່ສະດຸ້ງຫວາດຫວັ່ນ ເມື່ອບໍ່ສະດຸ້ງຫວາດຫວັ່ນ ຍ່ອມດັບກິເລດໃຫ້ສະງົບໄດ້ສະເພາະຕົນ ແລະຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ" ຈອມເທບ ກ່າວໂດຍຫຍໍ້ ດ້ວຍຂໍ້ປະຕິບັດພຽງທໍ່ນີ້ ພິກຂຸຈຶ່ງຊື່ວ່າເປັນຜູ້ລຸດພົ້ນດ້ວຍທຳເປັນທີ່ສິ້ນຕັນຫາ ມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີທີ່ສຸດອັນສູງສຸດ ເປັນຜູ້ປະເສີດ ກວ່າເທວະດາແລະມະນຸດທັງຫຼາຍ

ໂມກຄັນລານະ ເຮົາຮູ້ຢູ່ວ່າ "ເຮົາເປັນຜູ້ກ່າວຄວາມລຸດພົ້ນດ້ວຍທຳເປັນທີ່ສິ້ນຕັນຫາໂດຍຫຍໍ້ແກ່ທ້າວສັກກະຈອມເທບແນວນີ້"

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ທ່ານພຣະມະຫາໂມກຄັນລານະມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະຕັນຫາສັງຂະຍະສູດທີ ໗ ຈົບ**

# ໗. ມະຫາຕັນຫາສັງຂະຍະສູດ

## ວ່າດ້ວຍຄວາມສິ້ນຕັນຫາ ສູດໃຫຍ່

### ທິດຖິຂອງສາຕິພິກຂຸ

[໓໙໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸຊື່ວ່າ ສາຕິ ບຸດຊາວປະມົງ ມີທິດຖິຊົ່ວແນວນີ້ເກີດຂຶ້ນວ່າ "ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ວິນຍານນີ້ນັ້ນເອງ ບໍ່ແມ່ນອື່ນ ທ່ອງທ່ຽວໄປ ແລ່ນໄປ"

ລຳດັບນັ້ນ ພິກຂຸເປັນຈຳນວນຫຼາຍໄດ້ຟັງວ່າ "ສາຕິພິກຂຸ ບຸດຊາວປະມົງ ມີທິດຖິຊົ່ວແນວນີ້ເກີດຂຶ້ນວ່າ "ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ວິນຍານນີ້ນັ້ນເອງ ບໍ່ແມ່ນອື່ນ ທ່ອງທ່ຽວໄປ ແລ່ນໄປ" ຈຶ່ງເຂົ້າໄປຫາສາຕິພິກຂຸແລ້ວຖາມວ່າ "ທ່ານສາຕິຮູ້ວ່າ ທ່ານມີທິດຖິຊົ່ວແນວນີ້ເກີດຂຶ້ນວ່າ "ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ ວິນຍານນີ້ນັ້ນເອງບໍ່ແມ່ນອື່ນ ທ່ອງທ່ຽວໄປ ແລ່ນໄປ" ແມ່ນບໍ?"

ສາຕິພິກຂຸຕອບວ່າ "ເປັນເລື້ອງຈິງ ທ່ານທັງຫຼາຍ ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງວ່າ ວິນຍານນີ້ນັ້ນເອງບໍ່ແມ່ນອື່ນ ທ່ອງທ່ຽວໄປ ແລ່ນໄປ"

ພິກຂຸເຫຼົ່ານັ້ນປາຖະໜາທີ່ຈະປົດເປື້ອງສາຕິພິກຂຸບຸດຊາວປະມົງຈາກທິດຖິຊົ່ວນັ້ນຈຶ່ງຊັກໄຊ້ ໄລ່ລຽງ ສອບສວນວ່າ "ທ່ານສາຕິ ທ່ານຢ່າໄດ້ກ່າວແນວນີ້ ທ່ານຢ່າໄດ້ ກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າເປັນການບໍ່ດີເລີຍ ຍ້ອນພຣະຜູ້ມີ ພຣະພາກບໍ່ໄດ້ຕັດຢ່າງນີ້ເລີຍ ທ່ານສາຕິ ວິນຍານອາໄສປັດໄຈເກີດຂຶ້ນ ພຣະຜູ້ມີພຣະພາກເຈົ້າ ຕັດແລ້ວໂດຍປະຣິຍາຍເປັນອະເນກວ່າ "ປາສະຈາກປັດໄຈ ກໍບໍ່ມີຄວາມເກີດຂຶ້ນແຫ່ງວິນຍານ"

ສາຕິພິກຂຸບຸດຊາວປະມົງຖືກພິກຂຸເຫຼົ່ານັ້ນຊັກໄຊ້ ໄລ່ລຽງ ສອບສວນຢູ່ແມ່ນຢ່າງນີ້ ກໍຍັງຍຶດໝັ້ນຖືໝັ້ນທິດຖິຊົ່ວນັ້ນຢ່າງຮຸນແຮງ ກ່າວຢູ່ວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຮູ້ທົ່ວເຖິງ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ ວິນຍານນີ້ນັ້ນເອງບໍ່ແມ່ນອື່ນ ທ່ອງທ່ຽວໄປ ແລ່ນໄປ"

### ເພື່ອນພິກຂຸບໍ່ອາດປ່ຽນທິດຖິຂອງທ່ານສາຕິ

[໓໙໗] ພິກຂຸເຫຼົ່ານັ້ນເມື່ອບໍ່ອາດປົດເປື້ອງສາຕິພິກຂຸບຸດຊາວປະມົງຈາກທິດຖິຊົ່ວນັ້ນໄດ້

ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງໃນທີ່ສົມຄວນແລ້ວ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ສາຕິພິກຂຸມີທິດຖິຊົ່ວແນວນີ້ເກີດຂຶ້ນວ່າ "ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງແລ້ວວ່າ ວິນຍານນີ້ນັ້ນເອງບໍ່ແມ່ນອື່ນທ່ອງທ່ຽວໄປ ແລ່ນໄປ" ຂ້າພຣະອົງທັງຫຼາຍໄດ້ສະດັບມາວ່າ "ສາຕິພິກຂຸມີທິດຖິຊົ່ວແນວນີ້ເກີດຂຶ້ນວ່າ "ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ແລ້ວວ່າ ວິນຍານນີ້ນັ້ນເອງ ບໍ່ແມ່ນອື່ນທ່ອງທ່ຽວໄປ ແລ່ນໄປ" ຄັ້ງນັ້ນ ຂ້າພຣະອົງທັງຫຼາຍ ເຂົ້າໄປຫາສາຕິພິກຂຸແລ້ວຖາມວ່າ "ທ່ານສາຕິ ຮູ້ວ່າ ທ່ານມີທິດຖິຊົ່ວແນວນີ້ເກີດຂຶ້ນວ່າ "ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ວິນຍານນີ້ນັ້ນເອງບໍ່ແມ່ນອື່ນ ທ່ອງທ່ຽວໄປ ແລ່ນໄປ ແມ່ນບໍ?" ເມື່ອຂ້າພຣະອົງທັງຫຼາຍຖາມຢ່າງນີ້ ສາຕິພິກຂຸໄດ້ຕອບຂ້າພຣະອົງທັງຫຼາຍວ່າ "ເປັນເລື້ອງຈິງ ທ່ານທັງຫຼາຍ ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ວິນຍານນີ້ນັ້ນເອງບໍ່ແມ່ນອື່ນທ່ອງທ່ຽວໄປ ແລ່ນໄປ"

ລຳດັບນັ້ນ ຂ້າພຣະອົງທັງຫຼາຍ ປາຖະໜາຈະປົດເປື້ອງສາຕິພິກຂຸຈາກທິດຖິຊົ່ວນັ້ນ ຈຶ່ງຊັກໄຊ້ ໄລ່ລຽງ ສອບສວນວ່າ "ທ່ານສາຕິ ທ່ານຢ່າໄດ້ກ່າວແນວນີ້ ທ່ານຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ເປັນການບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດໄວ້ຢ່າງນີ້ເລີຍ ທ່ານສາຕິ ວິນຍານອາໄສປັດໄຈເກີດຂຶ້ນ ພຣະຜູ້ມີພຣະພາກເຈົ້າຕັດແລ້ວໂດຍປະຣິຍາຍເປັນອະເນກວ່າ "ເມື່ອປາສະຈາກປັດໄຈ ກໍບໍ່ມີຄວາມເກີດຂຶ້ນ ແຫ່ງວິນຍານ" ສາຕິພິກຂຸຖືກຂ້າພຣະອົງທັງຫຼາຍຊັກໄຊ້ ໄລ່ລຽງ ສອບສວນຢູ່ແມ່ນແນວນີ້ ກໍຍັງຍຶດໝັ້ນຖືໝັ້ນທິດຖິຊົ່ວນັ້ນຢ່າງຮຸນແຮງ ຍັງກ່າວຢູ່ວ່າ "ເປັນເລື້ອງຈິງ ທ່ານທັງຫຼາຍ ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ວິນຍານນີ້ນັ້ນເອງບໍ່ແມ່ນອື່ນ ທ່ອງທ່ຽວໄປ ແລ່ນໄປ"

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງທັງຫຼາຍ ບໍ່ອາດປົດເປື້ອງສາຕິພິກຂຸຈາກທິດຖິຊົ່ວນັ້ນໄດ້ ຈຶ່ງມາຂາບທູນເລື້ອງນີ້ແດ່ ພຣະຜູ້ມີພຣະພາກເຈົ້າ"

## ພຣະພຸດທະເຈົ້າຊົງກຳຣາບທ່ານສາຕິ

[໓໙໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ "ມາເທີ້ນພິກຂຸ ທ່ານຈົ່ງໄປຮຽກສາຕິພິກຂຸບຸດຊາວປະມົງມາຕາມຄຳຂອງເຮົາວ່າ "ທ່ານສາຕິ ພຣະສາດສະດາຕັດຮຽກຫາທ່ານ" ພິກຂຸອົງນັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ຈຶ່ງເຂົ້າໄປຫາສາຕິພິກຂຸແລ້ວບອກວ່າ "ທ່ານສາຕິ ພຣະສາດສະດາຕັດຮຽກຫາທ່ານ"

ສາຕິພິກຂຸ ຮັບຄຳພິກຂຸນັ້ນແລ້ວໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດ ແລ້ວຈຶ່ງນັ່ງໃນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຕັດຖາມທ່ານ ວ່າ "ສາຕິ ໄດ້ຍິນວ່າ ທ່ານມີທິດຖິຊົ່ວແນວນີ້ເກີດຂຶ້ນວ່າ "ເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ວ່າ ວິນຍານນີ້ນັ້ນເອງບໍ່ແມ່ນອື່ນ ທ່ອງທ່ຽວໄປ ແລ່ນໄປ ແມ່ນບໍ?"

ສາຕິພິກຂຸທູນຕອບວ່າ "ເປັນເລື້ອງຈິງແທ້ ຂ້ານ້ອຍ ຂ້າພຣະອົງຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວວ່າ ວິນຍານນີ້ເອງບໍ່ແມ່ນອື່ນ ທ່ອງທ່ຽວໄປ ແລ່ນໄປ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ສາຕິ ວິນຍານນັ້ນ ເປັນແນວໃດ?"

ສາຕິພິກຂຸທູນຕອບວ່າ "ສະພາວະທີ່ເວົ້າໄດ້ ຮັບຮູ້ໄດ້ ສະເຫວີຍວິບາກແຫ່ງກຳທັງຫຼາຍທັງສ່ວນດີ ແລະ ສ່ວນຊົ່ວໃນບ່ອນນັ້ນ ໆ ເປັນວິນຍານ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂມຄະບຸລຸດ ທ່ານຮູ້ທຳຢ່າງນີ້ທີ່ເຮົາສະແດງແລ້ວຈາກຜູ້ໃດນໍ? ວິນຍານອາໄສປັດໄຈຈຶ່ງເກີດຂຶ້ນ ເຮົາກ່າວໄວ້ແລ້ວໂດຍປະຣິຍາຍເປັນອະເນກວ່າ "ເມື່ອປາສະຈາກປັດໄຈ ກໍບໍ່ມີຄວາມເກີດຂຶ້ນແຫ່ງວິນຍານ" ກໍເມື່ອເປັນດັ່ງນີ້ ທ່ານຊື່ວ່າກ່າວຕູ່ເຮົາຂຸດຕົນເອງ ແລະ ຈະປະສົບສິ່ງທີ່ບໍ່ແມ່ນບຸນເປັນຈຳນວນຫຼາຍ ຍ້ອນທິດຖິທີ່ຕົນຖືຜິດ ໂມຄະບຸລຸດຄວາມເຫັນຂອງທ່ານນັ້ນ ຈັກເປັນໄປເພື່ອສິ່ງບໍ່ແມ່ນປະໂຫຍດ ເພື່ອຄວາມທຸກຕະຫຼອດການລະນານ"

## ປັດໄຈເປັນເຫດເກີດແຫ່ງວິນຍານ

[໓໙໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ສາຕິພິກຂຸບຸດຊາວປະມົງນີ້ ຈະເປັນຜູ້ທຳຄວາມຈະເລີນໃນທຳວິໄນນີ້ໄດ້ແດ່ຫຼືບໍ່?"

ພິກຂຸເຫຼົ່ານັ້ນທູນຕອບວ່າ "ຈະເພິ່ງມີແນວໃດໄດ້ ຂໍ້ນີ້ມີບໍ່ໄດ້ເລີຍ ຂ້ານ້ອຍ"

ເມື່ອພິກຂຸທັງຫຼາຍ ຂາບທູນຢ່າງນີ້ແລ້ວ ສາຕິພິກຂຸບຸດຊາວປະມົງ ຈຶ່ງນັ່ງມິດ ເກີ້ເຂີນຄໍຕົກ ກົ້ມໜ້າ ຊົບເຊົາ ມິດປະຕິພານ

ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ວ່າສາຕິພິກຂຸບຸດຊາວປະມົງເປັນຜູ້ມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊົບເຊົາ ມິດປະຕິພານແລ້ວ ຈຶ່ງຕັດກັບທ່ານວ່າ "ໂມຄະບຸລຸດ ທ່ານຈັກຜາກົດດ້ວຍທິດຖິຊົ່ວຂອງຕົນເອງ ເຮົາຈັກສອບຖາມພິກຂຸທັງຫຼາຍໃນບ່ອນນີ້"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຍ່ອມຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວ ເໝືອນທີ່ສາຕິພິກຂຸກ່າວຕູ່ເຮົາ ຂຸດຕົນເອງແລະຈະປະສົບສິ່ງທີ່ບໍ່ແມ່ນບຸນເປັນຈຳນວນຫຼາຍ ຍ້ອນທິດຖິທີ່ຕົນຖືຜິດບໍ?"

ພິກຂຸເຫຼົ່ານັ້ນທູນຕອບວ່າ "ຂໍ້ນີ້ມີບໍ່ໄດ້ເລີຍ ຂ້ານ້ອຍ ຍ້ອນວິນຍານອາໄສປັດໄຈຈຶ່ງເກີດຂຶ້ນ ພຣະຜູ້ມີພຣະພາກເຈົ້າຕັດແລ້ວ ແກ່ຂ້າພຣະອົງທັງຫຼາຍໂດຍປະຣິຍາຍເປັນອະເນກວ່າ"ເມື່ອປາສະຈາກປັດໄຈ ກໍບໍ່ມີຄວາມເກີດຂຶ້ນແຫ່ງວິນຍານ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ດີແລ້ວ ດີແລ້ວ ທ່ານທັງຫຼາຍຮູ້ທົ່ວເຖິງທຳຕາມທີ່ເຮົາສະແດງແລ້ວ ວິນຍານອາໄສປັດໄຈຈຶ່ງເກີດຂຶ້ນ ເຮົາກ່າວໄວ້ແລ້ວໂດຍປະຣິຍາຍເປັນອະເນກວ່າ "ເມື່ອປາສະຈາກປັດໄຈ ກໍບໍ່ມີຄວາມເກີດຂຶ້ນແຫ່ງວິນຍານ" ແຕ່ສາຕິພິກຂຸບຸດຊາວປະມົງນີ້ກ່າວຕູ່ເຮົາ ຂຸດຕົນເອງ ແລະ ຈະປະສົບສິ່ງທີ່ບໍ່ແມ່ນບຸນເປັນຈຳນວນຫຼາຍຍ້ອນທິດຖິທີ່ຕົນຖືຜິດ ຄວາມເຫັນຢ່າງນັ້ນຂອງໂມຄະບຸລຸດນັ້ນ ຈັກເປັນໄປເພື່ອສິ່ງບໍ່ແມ່ນປະໂຫຍດ ແລະເພື່ອຄວາມທຸກຕະຫຼອດການລະນານ

[໔໐໐] ພິກຂຸທັງຫຼາຍ ວິນຍານທີ່ເກີດຂຶ້ນ ຍ້ອນອາໄສປັດໄຈໃດ ໆ ກໍນັບວ່າ "ວິນຍານ" ຕາມປັດໄຈນັ້ນ ໆ ວິນຍານທີ່ເກີດຂຶ້ນຍ້ອນອາໄສຈັກຂຸແລະຣູປາຣົມ ກໍນັບວ່າ "ຈັກຂຸວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສໂສຕະ ແລະ ສັດທາຣົມກໍນັບວ່າ "ໂສຕະວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສຄານະແລະຄັນທາຣົມກໍນັບວ່າ "ຄານະວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສຊິວຫາແລະຣະສາຣົມກໍນັບວ່າ "ຊິວຫາວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສກາຍແລະໂຜດທັບພາຣົມກໍນັບວ່າ "ກາຍວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສມະໂນ ແລະ ທຳມາຣົມກໍນັບວ່າ "ມະໂນວິນຍານ"

ພິກຂຸທັງຫຼາຍ ໄຟທີ່ລຸກຂຶ້ນຍ້ອນອາໄສເຊື້ອໃດ ໆ ກໍນັບວ່າ "ໄຟ" ຕາມເຊື້ອນັ້ນ ໆ ໄຟທີ່ລຸກຂຶ້ນຍ້ອນອາໄສໄມ້ກໍນັບວ່າ "ໄຟໄມ້" ໄຟທີ່ລຸກຂຶ້ນຍ້ອນອາໄສປ່າກໍນັບວ່າ "ໄຟປ່າ" ໄຟທີ່ລຸກຂຶ້ນຍ້ອນອາໄສຫຍ້າກໍນັບວ່າ "ໄຟຫຍ້າ" ໄຟທີ່ລຸກຂຶ້ນຍ້ອນອາໄສມູນງົວ ກໍນັບວ່າ "ໄຟມູນງົວ" ໄຟທີ່ລຸກຂຶ້ນຍ້ອນອາໄສແກບກໍນັບວ່າ "ໄຟແກບ" ໄຟທີ່ລຸກຂຶ້ນຍ້ອນອາໄສຂີ້ເຫຍື່ອກໍນັບວ່າ "ໄຟຂີ້ເຫຍື່ອ" ແມ່ນສັນໃດ ວິນຍານກໍຄືກັນສັນນັ້ນ ເກີດຂຶ້ນຍ້ອນອາໄສປັດໄຈໃດ ໆ ກໍນັບວ່າ "ວິນຍານ" ຕາມປັດໄຈນັ້ນ ໆ ວິນຍານທີ່ເກີດຂຶ້ນຍ້ອນອາໄສຈັກຂຸແລະຣູປາຣົມກໍນັບວ່າ "ຈັກຂຸວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສໂສຕະແລະສັດທາຣົມກໍນັບວ່າ "ໂສຕະວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສຄານະແລະຄັນທາຣົມກໍນັບວ່າ "ຄານະວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສຊິວຫາແລະຣະສາຣົມກໍນັບວ່າ "ຊິວຫາວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສກາຍແລະໂຜຕທັພພາຣົມກໍນັບວ່າ "ກາຍວິນຍານ" ວິນຍານທີ່ເກີດຂຶ້ນຍ້ອນອາໄສມະໂນແລະທຳມາຣົມກໍນັບວ່າ "ມະໂນວິນຍານ"

## ປັດໄຈເປັນເຫດເກີດແຫ່ງຂັນ ໕

[໔໐໑] ພິກຂຸທັງຫຼາຍ ທ່ານທັງຫຼາຍເຫັນວ່າ "ຂັນ ໕ ເກີດຂຶ້ນແລ້ວແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍເຫັນວ່າ "ຂັນ ໕ ນັ້ນເກີດຂຶ້ນຍ້ອນອາຫານແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍເຫັນວ່າ "ຂັນ ໕ ນັ້ນ ມີຄວາມດັບເປັນທຳມະດາຍ້ອນຄວາມດັບແຫ່ງອາຫານນັ້ນແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ຄວາມສົງໄສເກີດຂຶ້ນຍ້ອນຄວາມເຄືອບແຄງວ່າ "ຂັນ ໕ ນີ້ມີຫຼືບໍ່?"

"ເປັນແນວນັ້ນ ຂ້ານ້ອຍ"

"ຄວາມສົງໄສເກີດຂຶ້ນຍ້ອນຄວາມເຄືອບແຄງວ່າ "ຂັນ ໕ ເກີດຂຶ້ນຍ້ອນອາຫານມີຫຼືບໍ່"

"ເປັນແນວນັ້ນ ຂ້ານ້ອຍ"

"ຄວາມສົງໄສເກີດຂຶ້ນຍ້ອນຄວາມເຄືອບແຄງວ່າ "ຂັນ ໕ ນັ້ນມີຄວາມດັບເປັນທຳມະດາຍ້ອນຄວາມດັບແຫ່ງອາຫານນັ້ນມີຫຼືບໍ່?"

"ເປັນແນວນັ້ນ ຂ້ານ້ອຍ"

"ບຸກຄົນເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າ "ຂັນ ໕ ນີ້ເກີດຂຶ້ນແລ້ວຍ່ອມລະຄວາມສົງໄສທີ່ເກີດຂຶ້ນໄດ້ບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ບຸກຄົນເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າ "ຂັນ ໕ ເກີດຂຶ້ນຍ້ອນອາຫານນັ້ນ" ຍ່ອມລະຄວາມສົງໄສທີ່ເກີດຂຶ້ນໄດ້ແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ບຸກຄົນເຫັນຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າ "ຂັນ ໕ ນັ້ນ ມີຄວາມດັບເປັນທຳມະດາ ຍ້ອນຄວາມດັບແຫ່ງອາຫານນັ້ນ ຍ່ອມລະຄວາມສົງໄສທີ່ເກີດຂຶ້ນໄດ້ແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍໝົດຄວາມສົງໄສໃນຂໍ້ທີ່ວ່າ "ຂັນ ໕ ນີ້ເກີດຂຶ້ນແລ້ວແມ່ນດັ່ງນີ້ແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍມົດຄວາມສົງໄສໃນຂໍ້ວ່າ "ຂັນ ໕ ເກີດຂຶ້ນຍ້ອນອາຫານນັ້ນແມ່ນດັ່ງນີ້ບໍ?"
"ເປັນແນວນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍມົດຄວາມສົງໄສໃນຂໍ້ວ່າ "ຂັນ ໕ ນັ້ນມີຄວາມດັບໄປເປັນທຳມະດາ ຍ້ອນຄວາມດັບແຫ່ງອາຫານນັ້ນແມ່ນດັ່ງນີ້ຫຼືບໍ່?"
"ເປັນແນວນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍເຫັນດີແລ້ວ ຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າ "ຂັນ ໕ ນີ້ເກີດຂຶ້ນແລ້ວດັ່ງນີ້ແມ່ນບໍ?"
"ເປັນແນວນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍເຫັນດີແລ້ວ ຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າ "ຂັນ ໕ ເກີດຂຶ້ນຍ້ອນອາຫານນັ້ນດັ່ງນີ້ແມ່ນບໍ?"
"ເປັນແນວນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍເຫັນດີແລ້ວ ຕາມຄວາມເປັນຈິງດ້ວຍປັນຍາອັນຊອບວ່າ "ຂັນ ໕ ນັ້ນ ມີຄວາມດັບເປັນທຳມະດາ ຍ້ອນຄວາມດັບແຫ່ງອາຫານນັ້ນດັ່ງນີ້ແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ຫາກທ່ານທັງຫຼາຍ ຈະເພິ່ງຕິດຢູ່ ເພີດເພີນຢູ່ ປາຖະໜາຢູ່ ຍຶດຖືຢູ່ເຊິ່ງ ທິດຖິອັນບໍລິສຸດຜຸດຜ່ອງແນວນີ້ວ່າ ເປັນຂອງເຮົາ ທ່ານທັງຫຼາຍຈະເພິ່ງຮູ້ທົ່ວເຖິງທຳທີ່ປຽບດ້ວຍແພ ເຊິ່ງເຮົາສະແດງແລ້ວເພື່ອປະໂຫຍດແກ່ການກຳຈັດອອກ ບໍ່ແມ່ນສະແດງເພື່ອປະໂຫຍດແກ່ການຍຶດຖືແມ່ນບໍ?"

"ຂໍ້ນີ້ບໍ່ເປັນແນວນັ້ນ ຂ້ານ້ອຍ"

"ຫາກທ່ານທັງຫຼາຍບໍ່ຕິດຢູ່ ບໍ່ເພີດເພີນຢູ່ ບໍ່ປາຖະໜາຢູ່ ບໍ່ຍຶດຖືຢູ່ ເຊິ່ງທິດຖິອັນບໍລິສຸດຜຸດຜ່ອງແນວນີ້ວ່າ ເປັນຂອງເຮົາ ທ່ານທັງຫຼາຍຈະເພິ່ງຮູ້ທົ່ວເຖິງທຳທີ່ປຽບດ້ວຍແພ ເຊິ່ງເຮົາສະແດງແລ້ວເພື່ອປະໂຫຍດແກ່ການກຳຈັດອອກ ບໍ່ແມ່ນສະແດງເພື່ອປະໂຫຍດແກ່ການຍຶດຖືແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

# ປະຕິດຈະສະມຸບບາດກະບວນການເກີດ

[໔໐໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ອາຫານ ໔ ຊະນິດນີ້ ມີເພື່ອຄວາມດຳລົງຢູ່ແຫ່ງສັດທີ່ເກີດແລ້ວແດ່ ເພື່ອຄວາມອະນຸເຄາະເຫຼົ່າສັດທີ່ສະແຫວງຫາພົບທີ່ເກີດແດ່

ອາຫານ ໔ ຊະນິດ ອັນໃດແນ ຄື

໑. ກະວະລິງກາຣາຫານ (ອາຫານຄືຄຳເຂົ້າ) ຫຍາບແດ່ ລະອຽດແດ່
໒. ຜັດສາຫານ (ອາຫານຄືການສຳຜັດ)
໓. ມະໂນສັນເຈຕະນາຫານ (ອາຫານຄືຄວາມຈົງໃຈ)
໔. ວິນຍານາຫານ (ອາຫານຄືວິນຍານ)

ອາຫານ ໔ ຊະນິດນີ້ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນທີ່ເກີດ ມີອັນໃດເປັນແດນເກີດ?

ອາຫານ ໔ ຊະນິດ ນີ້ມີຕັນຫາເປັນຕົ້ນເຫດ ມີຕັນຫາເປັນເຫດເກີດ ມີຕັນຫາເປັນທີ່ເກີດ ມີຕັນຫາເປັນແດນເກີດ

ຕັນຫານີ້ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນທີ່ເກີດ ມີອັນໃດເປັນແດນເກີດ?

ຕັນຫານີ້ມີເວທະນາເປັນຕົ້ນເຫດ ມີເວທະນາເປັນເຫດເກີດ ມີເວທະນາເປັນທີ່ເກີດ ມີເວທະນາ ເປັນແດນເກີດ

ເວທະນານີ້ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນທີ່ເກີດ ມີອັນໃດເປັນແດນເກີດ?

ເວທະນານີ້ມີຜັດສະເປັນຕົ້ນເຫດ ມີຜັດສະເປັນເຫດເກີດ ມີຜັດສະເປັນທີ່ເກີດ ມີຜັດສະເປັນແດນເກີດ

ຜັດສະນີ້ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນທີ່ເກີດ ມີອັນໃດເປັນແດນເກີດ?

ຜັດສະນີ້ມີສະລາຍະຕະນະເປັນຕົ້ນເຫດ ມີສະລາຍະຕະນະເປັນເຫດເກີດ ມີສະລາຍະຕະນະເປັນທີ່ເກີດ ມີສະລາຍະຕະນະເປັນແດນເກີດ

ສະລາຍະຕະນະນີ້ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນທີ່ເກີດ ມີອັນໃດເປັນແດນເກີດ?

ສະລາຍະຕະນະນີ້ມີນາມຮູບເປັນຕົ້ນເຫດ ມີນາມຮູບເປັນເຫດເກີດ ມີນາມຮູບເປັນທີ່ເກີດ ມີນາມຮູບເປັນແດນເກີດ

ນາມຮູບນີ້ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນທີ່ເກີດ ມີອັນໃດເປັນແດນເກີດ?

ນາມຮູບນີ້ມີວິນຍານເປັນຕົ້ນເຫດ ມີວິນຍານເປັນເຫດເກີດ ມີວິນຍານເປັນທີ່ເກີດ ມີວິນຍານເປັນແດນເກີດ

ວິນຍານນີ້ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນທີ່ເກີດ ມີອັນໃດເປັນແດນເກີດ?

ວິນຍານນີ້ມີສັງຂານເປັນຕົ້ນເຫດ ມີສັງຂານເປັນເຫດເກີດ ມີສັງຂານເປັນທີ່ເກີດ ມີສັງຂານເປັນແດນເກີດ

ສັງຂານທັງຫຼາຍເຫຼົ່ານີ້ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນທີ່ເກີດ ມີອັນໃດເປັນແດນເກີດ?

ສັງຂານທັງຫຼາຍເຫຼົ່ານີ້ ມີອະວິດຊາເປັນຕົ້ນເຫດ ມີອະວິດຊາເປັນເຫດເກີດ ມີອະວິດຊາເປັນທີ່ເກີດ ມີອະວິດຊາເປັນແດນເກີດ

| | | | |
|---|---|---|---|
| ຍ້ອນ | ອະວິດຊາ | ເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນ | ສັງຂານ | ເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນ | ວິນຍານ | ເປັນປັດໄຈ | ນາມຮູບຈຶ່ງມີ |
| ຍ້ອນ | ນາມຮູບ | ເປັນປັດໄຈ | ສະລາຍະຕະນະຈຶ່ງມີ |
| ຍ້ອນ | ສະລາຍະຕະນະ | ເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນ | ຜັດສະ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນ | ເວທະນາ | ເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນ | ຕັນຫາ | ເປັນປັດໄຈ | ອຸປາທານຈຶ່ງມີ |
| ຍ້ອນ | ອຸປາທານ | ເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນ | ພົບ | ເປັນປັດໄຈ | ຊາດຈຶ່ງມີ |

ຍ້ອນ ຊາດ ເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ

ແລະ ອຸປາຍາດຈຶ່ງມີ

ຄວາມເກີດຂຶ້ນແຫ່ງກອງທຸກທັງໝົດນັ້ນ ຍ່ອມມີໄດ້ແນວນີ້

[໔໐໓] ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ" ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຍ້ອນຊາດເປັນປັດໄຈ ຊະຣາແລະມໍລະນະຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນຢ່າງນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ" ຍ້ອນພົບເປັນປັດໄຈຊາດຈຶ່ງມີແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ" ຍ້ອນອຸປາທານເປັນປັດໄຈພົບຈຶ່ງມີແມ່ນແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ເຮົາກ່າວແລ້ວວ່າ "ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ" ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີແມ່ນແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ" ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ" ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ" ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ" ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີແມ່ນແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ" ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍ ມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີແມ່ນບໍ ຫຼືວ່າໃນເລື້ອງນີ້ ເປັນແນວໃດ?"

"ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ" ພິກຂຸທັງຫຼາຍ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

[໔໐໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຂໍ້ທີ່ກ່າວນັ້ນຖືກຕ້ອງແລ້ວ ທ່ານທັງຫຼາຍກ່າວແນວນັ້ນ ແມ່ນເຮົາກໍກ່າວແນວນັ້ນ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ຄື

| | | |
|---|---|---|
| ຍ້ອນ ອະວິດຊາ | ເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນ ສັງຂານ | ເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນ ວິນຍານ | ເປັນປັດໄຈ | ນາມຮູບຈຶ່ງມີ |
| ຍ້ອນ ນາມຮູບ | ເປັນປັດໄຈ | ສະລາຍະຕະນະຈຶ່ງມີ |
| ຍ້ອນ ສະລາຍະຕະນະ | ເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນ ຜັດສະ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນ ເວທະນາ | ເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນ ຕັນຫາ | ເປັນປັດໄຈ | ອຸປາທານຈຶ່ງມີ |
| ຍ້ອນ ອຸປາທານ | ເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນ ພົບ | ເປັນປັດໄຈ | ຊາດຈຶ່ງມີ |

ຍ້ອນ ຊາດ ເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງມີ

ຄວາມເກີດຂຶ້ນແຫ່ງກອງທຸກທັງໝົດນັ້ນ ຍ່ອມມີໄດ້ຢ່າງນີ້

## ປະຕິດຈະສະມຸບບາດກະບວນການດັບ

ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ

| | |
|---|---|
| ຍ້ອນສັງຂານດັບ | ວິນຍານຈຶ່ງດັບ |
| ຍ້ອນວິນຍານດັບ | ນາມຮູບຈຶ່ງດັບ |
| ຍ້ອນນາມຮູບດັບ | ສະລາຍະຕະນະຈຶ່ງດັບ |
| ຍ້ອນສະລາຍະຕະນະດັບ | ຜັດສະຈຶ່ງດັບ |
| ຍ້ອນຜັດສະດັບ | ເວທະນາຈຶ່ງດັບ |
| ຍ້ອນເວທະນາດັບ | ຕັນຫາຈຶ່ງດັບ |
| ຍ້ອນຕັນຫາດັບ | ອຸປາທານຈຶ່ງດັບ |
| ຍ້ອນອຸປາທານດັບ | ພົບຈຶ່ງດັບ |
| ຍ້ອນພົບດັບ | ຊາດຈຶ່ງດັບ |

ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງດັບ

ຄວາມດັບແຫ່ງກອງທຸກທັງໝົດນັ້ນ ຍ່ອມມີໄດ້ແນວນີ້

[໔໐໕] ຂໍ້ທີ່ເຮົາກ່າວແລ້ວ ວ່າ "ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ" ຍ້ອນຊາດດັບຊະຣາແລະມໍລະນະຈຶ່ງດັບ ແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

ພິກຂຸທັງຫຼາຍ ຂາບທູນວ່າ "ຍ້ອນຊາດດັບ ຊະຣາແລະມໍລະນະຈຶ່ງດັບ ໃນເລື້ອງນີ້ຂ້າພຣະອົງທັງຫຼາຍ ມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນພົບດັບ ຊາດຈຶ່ງດັບ" ຍ້ອນພົບດັບ ຊາດຈຶ່ງດັບແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນພົບດັບ ຊາດຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍ ມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນອຸປາທານດັບ ພົບຈຶ່ງດັບ" ຍ້ອນອຸປາທານດັບພົບຈຶ່ງດັບແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນອຸປາທານດັບ ພົບຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍ ມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ" ຍ້ອນຕັນຫາດັບອຸປາທານຈຶ່ງດັບແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນເວທະນາດັບ ຕັນຫາຈຶ່ງດັບ" ຍ້ອນເວທະນາດັບ ຕັນຫາຈຶ່ງດັບແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນເວທະນາດັບ ຕັນຫາຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນຜັດສະດັບ ເວທະນາຈຶ່ງດັບ" ຍ້ອນຜັດສະດັບ ເວທະນາຈຶ່ງດັບ ແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນຜັດສະດັບ ເວທະນາຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນ

ແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ" ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ" ຍ້ອນນາມຮູບດັບສະລາຍະຕະນະຈຶ່ງດັບແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນວິນຍານດັບ ນາມຮູບຈຶ່ງດັບ" ຍ້ອນວິນຍານດັບ ນາມຮູບຈຶ່ງດັບ ແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນວິນຍານດັບ ນາມຮູບຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນສັງຂານດັບ ວິນຍານຈຶ່ງດັບ" ຍ້ອນສັງຂານດັບ ວິນຍານຈຶ່ງດັບ ແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນສັງຂານດັບ ວິນຍານຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

"ຂໍ້ທີ່ເຮົາກ່າວແລ້ວວ່າ "ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ" ພິກຂຸທັງຫຼາຍ ຍ້ອນອະວິດຊາດັບສັງຂານຈຶ່ງດັບ ແມ່ນຫຼືບໍ່? ຫຼື ວ່າ ໃນເລື້ອງນີ້ພວກທ່ານມີຄວາມເຫັນເປັນແນວໃດ?"

"ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ ໃນເລື້ອງນີ້ ຂ້າພຣະອົງທັງຫຼາຍມີຄວາມເຫັນເປັນແນວນີ້ ຂ້ານ້ອຍ"

[໔໐໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຂໍ້ທີ່ກ່າວນັ້ນຖືກຕ້ອງແລ້ວ ທ່ານທັງຫຼາຍກ່າວແນວນີ້ ແມ່ນເຮົາກໍກ່າວແນວນີ້ ເມື່ອສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບ ສິ່ງນີ້ຈຶ່ງດັບ ຄື

ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ

ຍ້ອນສັງຂານດັບ ວິນຍານຈຶ່ງດັບ
ຍ້ອນວິນຍານດັບ ນາມຮູບຈຶ່ງດັບ
ຍ້ອນນາມຮູບດັບ ສະລາຍະຕະນະຈຶ່ງດັບ
ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ
ຍ້ອນຜັດສະດັບ ເວທະນາຈຶ່ງດັບ
ຍ້ອນເວທະນາດັບ ຕັນຫາຈຶ່ງດັບ
ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ
ຍ້ອນອຸປາທານດັບ ພົບຈຶ່ງດັບ
ຍ້ອນພົບດັບ ຊາດຈຶ່ງດັບ

ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ຈຶ່ງດັບ

ຄວາມດັບແຫ່ງກອງທຸກທັງໝົດນັ້ນ ຍ່ອມມີໄດ້ຢ່າງນີ້

## **ພຣະທຳມະຄຸນ**

[໔໐໗] "ພິກຂຸທັງຫຼາຍ ທ່ານທັງຫຼາຍ ເມື່ອຮູ້ເຫັນແນວນີ້ຈະເພິ່ງກັບຣະນຶກເຖິງ°ຂັນ ທາດ ອາຍະຕະນະ ໃນອະດີດຕະການວ່າ "ໃນອະດີດຕະການຍາວນານ ເຮົາໄດ້ມີແລ້ວບໍ່ນໍ? ຫຼື ບໍ່ໄດ້ມີແລ້ວນໍ? ເຮົາໄດ້ເປັນອັນໃດມານໍ? ເຮົາໄດ້ເປັນແນວໃດມານໍ? ເຮົາໄດ້ເປັນອັນໃດແລ້ວຈຶ່ງມາເປັນອັນໃດອີກນໍ" ແດ່ບໍ?"

"ຂໍ້ນີ້ບໍ່ເປັນດັ່ງນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍ ເມື່ອຮູ້ເຫັນຢ່າງນີ້ຈະເພິ່ງກັບຣະນຶກເຖິງຂັນ ທາດ ອາຍະຕະນະໃນອະນາຄົດວ່າ "ໃນອະນາຄົດຕະການຍາວນານ ເຮົາໄດ້ມີແລ້ວບໍ່ນໍ? ຫຼື ບໍ່ໄດ້ມີແລ້ວນໍ? ເຮົາໄດ້ເປັນອັນໃດມານໍ? ເຮົາໄດ້ເປັນແນວໃດມານໍ? ເຮົາໄດ້ເປັນອັນໃດແລ້ວຈຶ່ງມາເປັນອັນໃດອີກນໍ" ແດ່ບໍ?"

"ຂໍ້ນີ້ບໍ່ເປັນດັ່ງນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍ ເມື່ອຮູ້ເຫັນຢ່າງນີ້ ຈະເພິ່ງມີຄວາມສົງໄສພາຍໃນຕົນຜາຣົບປັດຈຸບັນການໃນບັດນີ້ວ່າ "ເຮົາເປັນຢູ່ບໍ ຫຼືບໍ່ເປັນຢູ່ນໍ? ເຮົາເປັນອັນໃດນໍ? ເຮົາເປັນແນວໃດນໍ? ສັດນີ້ມາຈາກໄສນໍ ແລ້ວເຂົາຈັກໄປໄສກັນຕໍ່ນໍ?" ແດ່ບໍ"

"ຂໍ້ນີ້ບໍ່ເປັນດັ່ງນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍ ເມື່ອຮູ້ເຫັນຢ່າງນີ້ຈະເພິ່ງກ່າວແນວນີ້ວ່າ "ພຣະສາດສະດາເປັນຄູຂອງເຮົາທັງຫຼາຍ ເຮົາທັງຫຼາຍຕ້ອງກ່າວແນວນີ້ ດ້ວຍຄວາມເຄົາລົບຕໍ່ພຣະສາດສະດາ" ແດ່ບໍ?"

"ຂໍ້ນີ້ບໍ່ເປັນດັ່ງນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍ ເມື່ອຮູ້ເຫັນຢ່າງນີ້ຈະເພິ່ງກ່າວແນວນີ້ວ່າ "ພຣະສະມະນະຕັດຢ່າງນີ້ ແລະເຮົາທັງຫຼາຍຜູ້ຊື່ວ່າເປັນສະມະນະ ກໍກ່າວແນວນີ້" ແດ່ບໍ?"

"ຂໍ້ນີ້ບໍ່ເປັນດັ່ງນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍເມື່ອຮູ້ເຫັນຢ່າງນີ້ ຈະເພິ່ງຍົກຍ້ອງສາດສະດາອື່ນແດ່ບໍ"

"ຂໍ້ນີ້ບໍ່ເປັນດັ່ງນັ້ນ ຂ້ານ້ອຍ"

"ທ່ານທັງຫຼາຍ ເມື່ອຮູ້ເຫັນຢ່າງນີ້ຈະເພິ່ງເຊື່ອຖືຂໍ້ຂໍ້ວັດປະຕິບັດ ການຕື່ນລັດທິແລະການຖືມຸງຄຸນຂອງພວກສະມະນະພາມຜູ້ເປັນປຸຖຸຊົນ ໂດຍເຊື່ອວ່າເປັນແກ່ນສານແດ່ບໍ?"

"ຂໍ້ນີ້ບໍ່ເປັນດັ່ງນັ້ນ ຂ້ານ້ອຍ"

"ສິ່ງໃດທີ່ທ່ານທັງຫຼາຍຮູ້ເອງ ເຫັນເອງ ເຂົ້າໃຈແລ້ວ ທ່ານທັງຫຼາຍຈະເພິ່ງກ່າວເຖິງສະເພາະສິ່ງນັ້ນບໍ່ແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ພິກຂຸທັງຫຼາຍ ຂໍ້ທີ່ກ່າວນັ້ນຖືກຕ້ອງແລ້ວ ເຮົານຳທ່ານທັງຫຼາຍເຂົ້າໄປ (ເຖິງນິບພານ) ແລ້ວດ້ວຍທຳນີ້ ເຊິ່ງຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ຍ້ອນອາໄສຄຳທີ່ເຮົາທີ່ກ່າວໄວ້ວ່າ "ພິກຂຸທັງຫຼາຍ ທຳນີ້ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃສ່ຕົນ ອັນວິນຍູຊົນ ເພິ່ງຮູ້ສະເພາະຕົນ" ເຮົາຈຶ່ງກ່າວໄວ້ແນວນີ້"

## ອົງປະກອບແຫ່ງການເກີດໃນທ້ອງ

[໔໐໗] ພິກຂຸທັງຫຼາຍ ຍ້ອນປັດໄຈ ໓ ປະການປະຊຸມພ້ອມກັນ ການຖືກຳເນີດໃນທ້ອງຈຶ່ງມີໄດ້ ໃນສັດໂລກນີ້ ເມື່ອມານດາບິດາຢູ່ຮ່ວມກັນ ແຕ່ມານດາຍັງບໍ່ມີຣະດູ ແລະ ປະຕິນສົນທະວິນຍານ໌ ຍັງບໍ່ຜາກົດ ການຖືກຳເນີດໃນທ້ອງກໍຍັງມີບໍ່ໄດ້

ໃນສັດໂລກນີ້ ເມື່ອມານດາບິດາຢູ່ຮ່ວມກັນ ມານດາມີຣະດູ ແຕ່ປະຕິສົນທະວິນຍານຍັງບໍ່ຜາກົດ ການຖືກຳເນີດໃນທ້ອງກໍຍັງມີບໍ່ໄດ້

ແຕ່ເມື່ອໃດ ມານດາບິດາຢູ່ຮ່ວມກັນ ມານດາມີຣະດູ ແລະ ປະຕິສົນທິວິນຍານກໍຜາກົດ ເມື່ອນັ້ນ ຍ້ອນປັດໄຈ ๓ ປະການປະຊຸມພ້ອມກັນຢ່າງນີ້ ການຖືກຳເນີດໃນທ້ອງຈຶ່ງມີໄດ້

ມານດາຍ່ອມຖືຮັກສາເດັກອ່ອນໃນທ້ອງນັ້ນ ๙ ເດືອນແດ່ ໑໐ ເດືອນແດ່ ຈຶ່ງເກີດເດັກອ່ອນຜູ້ເປັນພາລະໜັກນັ້ນດ້ວຍຄວາມກັງວົນໃຈຫຼາຍ ແລະ ລ້ຽງເດັກອ່ອນຜູ້ເປັນພາລະໜັກນັ້ນເຊິ່ງເກີດແລ້ວດ້ວຍເລືອດຂອງຕົນດ້ວຍຄວາມຫ່ວງໃຍ

ນ້ຳນົມຂອງມານດານັບເປັນເລືອດໃນອະຣິຍະວິໄນ ກຸມານນັ້ນອາໄສຄວາມຈະເລີນແລະຄວາມໃຫຍ່ຂຶ້ນແຫ່ງອິນຊີທັງຫຼາຍ ຍ່ອມມີການຫຼິ້ນດ້ວຍເຄື່ອງຫຼິ້ນສຳລັບກຸມານ ຄື ໄຖນ້ອຍ ໆ ຕີໄມ້ໝາກອີ່ ປີ້ນຫຼັງກາ ຫຼິ້ນໝາກປິ່ນ ຜອງຊາຍ ລົດນ້ອຍ ທະນູນ້ອຍ

ພິກຂຸທັງຫຼາຍ ກຸມານນັ້ນອາໄສຄວາມຈະເລີນ ແລະ ຄວາມໃຫຍ່ຂຶ້ນແຫ່ງອິນຊີທັງຫຼາຍອິ່ມເອີບ ພຽບພ້ອມ ບົນເປີຢູ່ດ້ວຍກາມມະຄຸນ ໕ ປະການ ຄື

໑. ຮູບທີ່ຈະຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ຈະຮູ້ແຈ້ງທາງຫູ ฯลฯ
໓. ກິ່ນທີ່ຈະຮູ້ແຈ້ງທາງດັງ ฯลฯ
໔. ຣົດທີ່ຈະຮູ້ແຈ້ງທາງລີ້ນ ฯลฯ
໕. ໂຜດຖັບພະທີ່ຈະຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

[໔໐໙] ກຸມານນັ້ນ ເຫັນຮູບທາງຕາແລ້ວກຳໜັດໃນຮູບທີ່ໜ້າຮັກ ຂັດເຄືອງໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ມີສະຕິໃນກາຍບໍ່ຕັ້ງໝັ້ນ ແລະ ມີຈິດເປັນກາມາວະຈອນຢູ່ ບໍ່ຮູ້ແຈ້ງເຖິງເຈໂຕວິມຸດຕິປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳຕາມຄວາມເປັນຈິງ ເຂົາເປັນຜູ້ສົມບູນດ້ວຍຄວາມຍິນດີ ແລະ ຄວາມຍິນຮ້າຍຢ່າງນີ້ ສະເຫວີຍເວທະນາແນວໃດແນວໜຶ່ງ ສຸກກໍຕາມທຸກກໍຕາມ ບໍ່ແມ່ນທຸກບໍ່ແມ່ນສຸກກໍຕາມ ຍ່ອມເພີດເພີນ ຈົ່ມເຖິງ ຕິດໃຈເວທະນານັ້ນ ເມື່ອກຸມານນັ້ນເພີດເພີນ ຈົ່ມເຖິງ ຕິດໃຈເວທະນານັ້ນຢູ່ ຄວາມເພີດເພີນກໍເກີດຂຶ້ນ ຄວາມເພີດເພີນໃນເວທະນາທັງຫຼາຍ ເປັນອຸປາທານ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດແລະອຸປາຍາດຈຶ່ງມີ

ຄວາມເກີດຂຶ້ນແຫ່ງກອງທຸກທັງໝົດນັ້ນ ຍ່ອມມີໄດ້ແນວນີ້

ຟັງສຽງທາງຫູ ຯລຯ
ດົມກິ່ນທາງດັງ ຯລຯ
ຊີມຣົດທາງລີ້ນ ຯລຯ
ຖືກຕ້ອງໂຜດຖັບພະທາງກາຍ ຯລຯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວກຳໜັດໃນທຳມາຣົມທີ່ໜ້າຮັກ ຂັດເຄືອງໃນທຳມາຣົມທີ່ບໍ່ໜ້າຮັກ ຍ່ອມເປັນຜູ້ມີສະຕິໃນກາຍບໍ່ຕັ້ງໝັ້ນ ແລະ ມີຈິດເປັນກາມາວະຈອນຢູ່ ບໍ່ຮູ້ແຈ້ງເຖິງເຈໂຕວິມຸດຕິ ປັນຍາວິມຸດຕິອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳຕາມຄວາມເປັນຈິງ ເຂົາເປັນຜູ້ສົມບູນດ້ວຍຄວາມຍິນດີ ແລະ ຄວາມຍິນຮ້າຍຢ່າງນີ້ ສະເຫວີຍເວທະນາແນວໃດແນວໜຶ່ງ ສຸກກໍຕາມ ທຸກກໍຕາມ ບໍ່ແມ່ນທຸກບໍ່ແມ່ນສຸກກໍຕາມ ຍ່ອມເພີດເພີນ ຈົ່ມເຖິງ ຕິດໃຈເວທະນານັ້ນຢູ່ ເມື່ອກຸມານນັ້ນເພີດເພີນ ຈົ່ມເຖິງ ຕິດໃຈເວທະນານັ້ນຢູ່ ຄວາມເພີດເພີນກໍເກີດຂຶ້ນ ຄວາມເພີດເພີນໃນເວທະນາທັງຫຼາຍ ເປັນອຸປາທານ ຍ້ອນອຸປາທານເປັນປັດໄຈພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງມີ

ຄວາມເກີດຂຶ້ນແຫ່ງກອງທຸກທັງໝົດນັ້ນ ຍ່ອມມີໄດ້ຢ່າງນີ້

## ພຣະພຸດທະຄຸນ

[໔໑໐] ພິກຂຸທັງຫຼາຍ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນອະຣະຫັນ ຕັດສະຮູ້ດ້ວຍຕົນເອງໂດຍຊອບ ພຽບພ້ອມດ້ວຍວິດຊາແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຕະຖາຄົດນັ້ນ ຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມໂລກ ແລະ ສອນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍຕົນເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ຕາມ ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ຄະຫະບໍດີ ບຸດຄະຫະບໍດີ ຫຼື ອະນຸຊົນ (ຄົນຜູ້ເກີດພາຍຫຼັງ) ໃນຕະກູນໃດຕະກູນໜຶ່ງ ຍ່ອມຟັງທຳນັ້ນ ຟັງທຳນັ້ນແລ້ວໄດ້ສັດທາໃນຕະຖາຄົດ ເມື່ອມີສັດທາແລ້ວຍ່ອມຄິດວ່າ “ການຢູ່ຄອງເຮືອນເປັນເລື້ອງອຶດອັດ ເປັນທາງແຫ່ງທຸລີ ການບວດເປັນທາງປອດໂປ່ງ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນເໝືອນສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ” ຕໍ່ມາ

ເຂົາລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະ ເຄືອຍາດນ້ອຍໃຫຍ່ ແຖຜົມແລະໜວດນຸ່ງຫົ່ມຜ້າ ກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ

## ສິກຂາແລະສາຊີບຂອງພິກຂຸ

[໔໑໑] ເຂົາເມື່ອບວດແລ້ວຢ່າງນີ້ ເປັນຜູ້ເຖິງພ້ອມດ້ວຍສິກຂາ ແລະ ສາຊີບສະເໝີດ້ວຍພິກຂຸທັງຫຼາຍ ຄື

໑. ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດ ແລະ ສັດຕາວຸດ ມີຄວາມ ລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ລະເວັ້ນຂາດຈາກການລັກຊັບ ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຂີ້ລັກ ເປັນຄົນສະອາດຢູ່

໓. ລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນ ທຳອັນເປັນກິດຂອງຊາວບ້ານ

໔. ລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳລົງຄວາມສັດ ມີຄຳເວົ້າເປັນຫຼັກ ເຊື່ອຖືໄດ້ ບໍ່ຫລອກລວງຊາວໂລກ

໕. ລະເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນ ເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນ ແລ້ວບໍ່ມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ສະມານຄົນທີ່ແຕກກັນ ສົ່ງເສີມຄົນທີ່ປອງດອງກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໖. ລະເວັ້ນຂາດຈາກການເວົ້າຄຳຫຍາບ ຄື ເວົ້າແຕ່ຄຳບໍ່ມີໂທດ ມ່ວນ ໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ

໗. ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າແຕ່ຄຳຈິງ ເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີທີ່ອ້າງອີງ ມີທີ່ກຳນົດ ປະກອບດ້ວຍປະໂຫຍດ ເໝາະແກ່ເວລາ

໘. ເວັ້ນຂາດຈາກການພາກພິຊະຄາມ ແລະ ພູຕະຄາມະ

໙. ສັນມື້ດຽວ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນໃນເວລາວິການ

໑໐. ເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງ ເສບດົນຕີ ແລະ ເບິ່ງການລະຫຼິ້ນທີ່ເປັນຂ້າເສິກແກ່ກຸສົນ

໑໑. ເວັ້ນຂາດຈາກການທັດຊົງ ປະດັບ ຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ ຂອງຫອມ ແລະເຄື່ອງຕົກແຕ່ງຜິວອັນເປັນລັກສະນະແຫ່ງການແຕ່ງຕົວ

໑໒. ເວັ້ນຂາດຈາກທີ່ນອນສູງໃຫຍ່

໑໓. ເວັ້ນຂາດຈາກການຮັບຄຳແລະເງິນ

๑๔. ເວັ້ນຂາດຈາກການຮັບທັນຍາຫານດິບ
๑๕. ເວັ້ນຂາດຈາກການຮັບຊີ້ນດິບ
๑๖. ເວັ້ນຂາດຈາກການຮັບສະຕີແລະກຸມາຣີ
๑๗. ເວັ້ນຂາດຈາກການຮັບຂ້າທາດຍິງແລະຂ້າທາດຊາຍ
๑๘. ເວັ້ນຂາດຈາກການຮັບແບ້ແລະແກະ
๑๙. ເວັ້ນຂາດຈາກການຮັບໄກ່ແລະໝູ
๒๐. ເວັ້ນຂາດຈາກການຮັບຊ້າງ ງົວ ມ້າ ແລະ ລາ
๒๑. ເວັ້ນຂາດຈາກການຮັບຮົ້ວສວນ ໄຮ່ນາ ແລະ ທີ່ດິນ
๒๒. ເວັ້ນຂາດຈາກການເຮັດໜ້າທີ່ເປັນຕົວແທນ ແລະ ຜູ້ສື່ສານ
๒๓. ເວັ້ນຂາດຈາກການຊື້ການຂາຍ
๒๔. ເວັ້ນຂາດຈາກການໂກງດ້ວຍຕາຊິງ ດ້ວຍຂອງປອມ ແລະ ດ້ວຍເຄື່ອງຕວງວັດ
๒๕. ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງ ແລະ ການຫຼອກລວງ
๒๖. ເວັ້ນຂາດຈາກການຕັດ (ອະໄວຍະວະ) ການຂ້າ ການຈອງຈຳ ການຕີຊິງແລ່ນແຖວ ການປຸ້ນ ແລະ ການຂູ່ກັນໂຊກ

ພິກຂຸນັ້ນ ເປັນຜູ້ສັນໂດດດ້ວຍຈີວອນພໍຫຸ້ມຮ່າງກາຍ ແລະ ບິນທະບາດພໍອີ່ມທ້ອງ ຈະໄປໃນບ່ອນໃດ ໆ ກໍໄປໄດ້ທັນທີ ນົກມີປີກຈະບິນໄປທີ່ໃດ ໆ ກໍມີແຕ່ປີກຂອງມັນເປັນພາລະບິນໄປທີ່ນັ້ນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເປັນຜູ້ສັນໂດດດ້ວຍຈີວອນພໍຫຸ້ມຮ່າງກາຍແລະບິນທະບາດພໍອີ່ມທ້ອງ ຈະໄປທີ່ໃດ ໆ ກໍໄປໄດ້ທັນທີ ພິກຂຸນັ້ນປະກອບດ້ວຍ ອະຣິຍະສີລຂັນນີ້ແລ້ວ ຍ່ອມສະເຫວີຍສຸກອັນປາສະຈາກໂທດໃນພາຍໃນ

ພິກຂຸນັ້ນ ເຫັນຮູບທາງຕາແລ້ວ ບໍ່ຮວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ

ຟັງສຽງທາງຫູ ฯລฯ
ດົມກິ່ນທາງດັງ ฯລฯ
ຊິມຣົດທາງລີ້ນ ฯລฯ
ຖືກຕ້ອງໂຜດຖັບພະທາງກາຍ ฯລฯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ຮວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມມະນິນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄື ອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸນັ້ນປະກອບດ້ວຍອະຣິ

ຍະອິນຊີສັງວອນ ຍ່ອມສະເຫວີຍສຸກອັນບໍ່ຜະສົມກັບກິເລດໃນພາຍໃນ

ພິກຂຸນັ້ນ ທໍາຄວາມຮູ້ສຶກຕົວໃນການກ້າວໄປ ການຖອຍກັບ ການແນມເບິ່ງ ການຫລຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການຫຍໍ້າ ການຊີມ ການຖ່າຍອຸດຈາຣະ ປັດສາວະ ການຍ່າງ ການຢືນ ການນັ່ງ ການຫຼັບ ການຕື່ນ ການເວົ້າ ການມິດ

## ການເຮັດຈິດໃຫ້ບໍລິສຸດ

[໔໑໒] ພິກຂຸນັ້ນປະກອບດ້ວຍອະຣິຍະສີລະຂັນ ອະຣິຍະອິນຊີສັງວອນແລະອະຣິຍະສະຕິສັມປະຊັນຍະນີ້ແລ້ວພັກຢູ່ ເສນາສະນະຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກຜາ ຖໍ້າ ປ່າຊ້າ ປ່າຕຶບ ກາງແຈ້ງ ກອງເຟືອງ ທ່ານກັບຈາກບິນທະບາດພາຍຫຼັງສັນພັດຕາຫານສໍາເລັດແລ້ວ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດໍາລົງສະຕິໄວ້ສະເພາະໜ້າ ທ່ານລະອະພິດຊາ (ຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ) ໃນໂລກ ມີໃຈປາສະຈາກອະພິດຊາຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະພະຍາບາດ ແລະ ຄວາມມຸ້ງຮ້າຍ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດ ເກື້ອກູນສັບພະສັດຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກພະຍາບາດແລະຄວາມມຸ້ງຮ້າຍ ລະຖີນະມິດທະ (ຄວາມຫົດຫູ່ແລະງ່ວມເຫງົາ) ປາສະຈາກຖີນະມິດທະ ກໍານົດແສງສະຫວ່າງມີສະຕິສໍາປະຊັນຍະຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຄວາມລໍາຄານໃຈ) ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະງົບຢູ່ພາຍໃນ ຊໍາຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີວິຈິກິດສາໃນກຸສົນທໍາຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

[໔໑໓] ພິກຂຸນັ້ນ ລະນິວອນ ໕ ປະການນີ້ ເຊິ່ງເປັນເຄື່ອງເສົ້າໝອງແຫ່ງຈິດແລະເປັນເຫດເຮັດປັນຍາໃຫ້ອ່ອນກໍາລັງໄດ້ແລ້ວ ສະຫງັດຈາກກາມ ແລະ ອະກຸສົນທໍາທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່ ບັນລຸຕະຕິຍະຊານ ຯລຯ[໑] ບັນລຸຈະຕຸດຖະຊານ ຯລຯ[໒]ຢູ່

## ຄວາມດັບແຫ່ງກອງທຸກ

[໔໑໔] ພິກຂຸນັ້ນ ເມື່ອເຫັນຮູບທາງຕາແລ້ວ ບໍ່ກໍາໜັດໃນຮູບທີ່ໜ້າຮັກ ບໍ່ຂັດເຄືອງໃນຮູບທີ່ໜ້າຊັງ ຍ່ອມເປັນຜູ້ມີສະຕິໃນກາຍຕັ້ງໝັ້ນ ແລະ ມີຈິດຫາປະມານບໍ່ໄດ້[໓] ຢູ່ ຮູ້ແຈ້ງເຖິງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທໍາຕາມຄວາມເປັນຈິງ ທ່ານລະ

ຄວາມຍິນດີຍິນຮ້າຍແບບນີ້ແລ້ວ ສະເຫວີຍເວທະນາແບບໃດແບບໜຶ່ງ ສຸກກໍຕາມ ທຸກກໍຕາມ ບໍ່ແມ່ນທຸກບໍ່ແມ່ນສຸກກໍຕາມ ກໍບໍ່ເພີດເພີນ ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນານັ້ນ ເມື່ອພິກຂຸນັ້ນບໍ່ເພີດເພີນ ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນານັ້ນຢູ່ ຄວາມເພີດເພີນໃນເວທະນາທັງຫຼາຍຈຶ່ງດັບໄປ ຍ້ອນຄວາມເພີດເພີນດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຂອງພິກຂຸນັ້ນຈຶ່ງດັບ ຄວາມດັບແຫ່ງກອງທຸກທັງໝົດນັ້ນ ຍ່ອມມີໄດ້ດ້ວຍອາການຢ່າງນີ້

ຟັງສຽງທາງຫູ ໆລໆ
ດົມກິ່ນທາງດັງ ໆລໆ
ຊີມຣົດທາງລີ້ນ ໆລໆ
ຖືກຕ້ອງໂຜດຖັບພະທາງກາຍ ໆລໆ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ຍິນດີໃນທຳມາຣົມທີ່ໜ້າຮັກ ບໍ່ຂັດເຄືອງໃນທຳມາຣົມທີ່ໜ້າຊັງ ຍ່ອມເປັນຜູ້ມີສະຕິໃນກາຍຕັ້ງໝັ້ນ ແລະ ມີຈິດຫາປະມານບໍ່ໄດ້ຢູ່ ຮູ້ຊັດເຖິງເຈໂຕວິມຸດຕິປັນຍາວິມຸດຕິ ອັນເປັນທີ່ດັບບໍ່ເຫຼືອແຫ່ງບາບອະກຸສົນທຳຕາມຄວາມເປັນຈິງ ທ່ານລະຄວາມຍິນດີຍິນຮ້າຍຢ່າງນີ້ແລ້ວ ສະເຫວີຍເວທະນາແບບໃດແບບໜຶ່ງ ສຸກກໍຕາມ ທຸກກໍຕາມ ບໍ່ແມ່ນທຸກບໍ່ແມ່ນສຸກກໍຕາມ ກໍບໍ່ເພີດເພີນ ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນານັ້ນ ເມື່ອພິກຂຸນັ້ນບໍ່ເພີດເພີນ ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນານັ້ນຢູ່ ຄວາມເພີດເພີນໃນເວທະນາທັງຫຼາຍຈຶ່ງດັບໄປ ຍ້ອນຄວາມເພີດເພີນດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຂອງພິກຂຸນັ້ນຈຶ່ງດັບ ຄວາມດັບແຫ່ງກອງທຸກທັງໝົດນັ້ນ ຍ່ອມມີໄດ້ຢ່າງນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງຊົງຈຳຕັນຫາສັງຂະຍະວິມຸດຕິໂດຍຫຍໍ້ຂອງເຮົານີ້ໄວ້ດ້ວຍອາການຢ່າງນີ້

ອັນໜຶ່ງ ທ່ານທັງຫຼາຍ ຈົ່ງຊົງຈຳສາຕິພິກຂຸບຸດຊາວປະມົງວ່າ ເປັນຜູ້ຕິດຢູ່ໃນຕາໜ່າງຄືຕັນຫາ ແລະ ກອງແຫ່ງຕັນຫາໃຫຍ່"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາຕັນຫາສັງຂະຍະສູດທີ ໘ ຈົບ**

# ໗. ມະຫາອັດສະປຸຣະສູດ

## ວ່າດ້ວຍເຫດການໃນອັດສະປຸຣະນິຄົມ ສູດໃຫຍ່

## ຂໍ້ປະຕິບັດຂອງສະມະນະ

[໔໑໕] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ອັດສະປຸຣະນິຄົມຂອງພຣະຣາດຊະກຸມານຊາວອັງຄະ ໃນແຄວ້ນອັງຄະ ໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດ ເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ໝູ່ຊົນຮູ້ຈັກທ່ານທັງຫຼາຍວ່າ "ສະມະນະ ສະມະນະ" ທ່ານທັງຫຼາຍ ເມື່ອເຂົາຖາມວ່າ "ທ່ານທັງຫຼາຍເປັນໃຜ" ກໍປະຕິຍານວ່າ "ເຮົາທັງຫຼາຍເປັນສະມະນະ" ເມື່ອທ່ານທັງຫຼາຍນັ້ນ ຜູ້ມີຊື່ຢ່າງງນີ້ ມີປະຕິຍານແບບນີ້ ກໍຄວນຕັ້ງໃຈຮູ້ວ່າ "ເຮົາທັງຫຼາຍຈັກສະມາທານປະພຶດທຳ໑ທີ່ເຮັດໃຫ້ເປັນສະມະນະ ແລະ ເປັນພາມ ເມື່ອເຮົາທັງຫຼາຍປະຕິບັດຢູ່ແບບນີ້ ຊື່ແລະປະຕິຍານນີ້ຂອງເຮົາທັງຫຼາຍກໍຈັກເປັນຄວາມຈິງແທ້ ແລະ ເມື່ອເຮົາທັງຫຼາຍໃຊ້ສອຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານຂອງທາຍົກເຫຼົ່າໃດ ປັດໄຈທັງ ຫຼາຍຂອງທາຍົກເຫຼົ່ານັ້ນ ກໍຈັກມີຜົນຫຼາຍ ມີອານິສົງຫຼາຍ ຍ້ອນເຮົາທັງຫຼາຍ ອີກປະການໜຶ່ງ ບັນພະຊານີ້ຂອງເຮົາທັງຫຼາຍ ກໍຈັກບໍ່ເປັນໝັນ ຈັກມີຜົນ ມີຄວາມຈະເລີນ"

ພິກຂຸທັງຫຼາຍ ທ່ານທັງຫຼາຍຄວນຕັ້ງໃຈຮູ້ແບບນີ້ແລ

## ຫິຣິໂອດຕັບປະ

[໔໑໖] ທຳທີ່ເຮັດໃຫ້ເປັນສະມະນະ ແລະ ເປັນພາມ ເປັນແບບໃດ?

ຄື ທ່ານທັງຫຼາຍຄວນຕັ້ງໃຈຮູ້ແບບນີ້ວ່າ "ເຮົາທັງຫຼາຍຈັກເປັນຜູ້ມີ ຫິຣິໂອດຕັບປ(ຄວາມຮູ້ສຶກອາຍໃນການເຮັດບາບ)" ບາງງເທື່ອທ່ານທັງຫຼາຍຈະມີຄວາມຄິດແບບນີ້ວ່າ "ເຮົາທັງຫຼາຍເປັນຜູ້ມີຫິຣິໂອດຕັບປະແລ້ວ ພໍລະ ດ້ວຍກິດພຽງທໍ່ນີ້ ເຮົາທັງຫຼາຍເຮັດກິດສຳເລັດແລ້ວ ດ້ວຍກິດພຽງທໍ່ນີ້ ປະໂຫຍດຈາກຄວາມເປັນສະມະນະ໒ ເຮົາທັງຫຼາຍກໍໄດ້ບັນລຸແລ້ວໂດຍລຳດັບ ກິດອື່ນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປບໍ່ໄດ້ມີອີກ" ທ່ານທັງຫຼາຍ ເຖິງຄວາມຍິນດີດ້ວຍກິດພຽງທໍ່ນັ້ນ

ເຮົາຂໍບອກທ່ານທັງຫຼາຍ ຂໍເຕືອນທ່ານທັງຫຼາຍ ເມື່ອກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປຍັງມີຢູ່ ປະໂຫຍດຈາກຄວາມເປັນສະມະນະທີ່ທ່ານທັງຫຼາຍປາຖະໜາ ຢ່າໄດ້ເສື່ອມໄປເລີຍ

## ກາຍສະມາຈານບໍລິສຸດ

[໔໑໗] ກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປ ເປັນແນວໃດ?

ຄື ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກມີກາຍສະມາຈານ (ຄວາມປະພຶດທາງກາຍ) ບໍລິສຸດ ຜາກົດ ເປີດເຜີຍ ບໍ່ບົກພ່ອງ ແລະ ສັງລວມລະວັງ ຈັກບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນດ້ວຍຄວາມເປັນຜູ້ມີກາຍສະມາຈານອັນບໍລິສຸດນັ້ນ" ບາງເທື່ອທ່ານທັງຫຼາຍຈະມີຄວາມຄິດແນວນີ້ວ່າ "ເຮົາທັງຫຼາຍເປັນຜູ້ມີຫິຣິໂອດຕັບປະແລ້ວ ມີກາຍສະມາຈານບໍລິສຸດແລ້ວ ພໍແລ້ວດ້ວຍກິດພຽງທໍ່ນີ້ ເຮົາທັງຫຼາຍໄດ້ເຮັດກິດສຳເລັດແລ້ວ ດ້ວຍກິດພຽງທໍ່ນີ້ ປະໂຫຍດຈາກຄວາມເປັນສະມະນະເຮົາທັງຫຼາຍກໍບັນລຸແລ້ວໂດຍລຳດັບ ກິດອື່ນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກບໍ່ມີ" ທ່ານທັງຫຼາຍ ເຖິງຄວາມຍິນດີດ້ວຍກິດພຽງທໍ່ນັ້ນ ເຮົາຂໍບອກທ່ານທັງຫຼາຍ ຂໍເຕືອນທ່ານທັງຫຼາຍ ເມື່ອກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກຍັງມີຢູ່ ປະໂຫຍດຈາກຄວາມເປັນສະມະນະທີ່ທ່ານທັງຫຼາຍປາຖະໜາ ຢ່າໄດ້ເສື່ອມໄປເລີຍ

## ວະຈີສະມາຈານບໍລິສຸດ

[໔໑໘] ກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກ ເປັນແນວໃດ?

ຄື ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກມີວະຈີສະມາຈານບໍລິສຸດ ຜາກົດ ເປີດເຜີຍ ບໍ່ບົກພ່ອງແລະສັງລວມລະວັງ ຈັກບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນດ້ວຍຄວາມເປັນຜູ້ມີວະຈີສະມາຈານບໍລິສຸດນັ້ນ" ບາງເທື່ອທ່ານທັງຫຼາຍ ຈະມີຄວາມຄິດແນວນີ້ວ່າ "ເຮົາທັງຫຼາຍເປັນຜູ້ມີຫິຣິໂອດຕັບປະແລ້ວ ມີກາຍສະມາຈານ ແລະ ວະຈີສະມາຈານບໍລິສຸດແລ້ວ ພໍລະດ້ວຍກິດພຽງທໍ່ນີ້ ເຮົາທັງຫຼາຍໄດ້ເຮັດກິດສຳເລັດແລ້ວ ດ້ວຍກິດພຽງທໍ່ນີ້ ປະໂຫຍດຈາກຄວາມເປັນສະມະນະເຮົາທັງຫຼາຍກໍໄດ້ບັນລຸແລ້ວໂດຍລຳດັບ ກິດອື່ນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກບໍ່ມີ" ທ່ານທັງຫຼາຍເຖິງຄວາມຍິນດີດ້ວຍກິດພຽງທໍ່ນັ້ນ ເຮົາຂໍບອກທ່ານທັງຫຼາຍ ຂໍເຕືອນທ່ານທັງຫຼາຍ ເມື່ອກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກຍັງມີຢູ່ ປະໂຫຍດຈາກຄວາມເປັນສະມະນະທີ່ທ່ານທັງຫຼາຍປາຖະໜາ ຢ່າໄດ້ເສື່ອມໄປເລີຍ

## ມະໂນສະມາຈານບໍລິສຸດ

[໔໑໙] ກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປ ເປັນແນວໃດ?

ຄື ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກມີມະໂນສະມາຈານບໍລິສຸດ ຜາກົດ ເປີດເຜີຍ ບໍ່ບົກພ່ອງແລະສັງລວມລະວັງ ຈັກບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນດ້ວຍຄວາມເປັນຜູ້ມີມະໂນສະມາຈານບໍລິສຸດນັ້ນ" ບາງເທື່ອທ່ານທັງຫຼາຍຈະມີຄວາມຄິດແນວນີ້ວ່າ "ເຮົາທັງຫຼາຍເປັນຜູ້ມີຫິຣິໂອດຕັບປະແລ້ວ ມີກາຍສະມາຈານ ວະຈີສະມາຈານ ແລະ ມະໂນສະມາຈານບໍລິສຸດແລ້ວ ພໍລະດ້ວຍກິດພຽງທໍ່ນີ້ ເຮົາທັງຫຼາຍເຮັດກິດສຳເລັດແລ້ວ ດ້ວຍກິດພຽງທໍ່ນີ້ ປະໂຫຍດຈາກຄວາມເປັນສະມະນະ ເຮົາທັງຫຼາຍກໍໄດ້ບັນລຸແລ້ວໂດຍລຳດັບ ກິດອື່ນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກບໍ່ມີ" ທ່ານທັງຫຼາຍ ເຖິງຄວາມຍິນດີດ້ວຍກິດພຽງທໍ່ນັ້ນ ເຮົາຂໍບອກທ່ານທັງຫຼາຍ ຂໍເຕືອນທ່ານທັງຫຼາຍ ເມື່ອກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກຍັງມີຢູ່ ປະໂຫຍດຈາກຄວາມເປັນສະມະນະທີ່ທ່ານທັງຫຼາຍປາຖະໜາ ຢ່າໄດ້ເສື່ອມໄປເລີຍ

## ອາຊີວະບໍລິສຸດ

[໔໘໐] ກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປ ເປັນແນວໃດ?

ຄື ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກມີອາຊີວະບໍລິສຸດ ຜາກົດ ເປີດເຜີຍ ບໍ່ບົກພ່ອງແລະສັງລວມລະວັງ ຈັກບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນດ້ວຍຄວາມເປັນຜູ້ມີອາຊີວະບໍລິສຸດນັ້ນ" ບາງເທື່ອທ່ານທັງຫຼາຍຈະມີຄວາມຄິດແນວນີ້ວ່າ "ເຮົາທັງຫຼາຍເປັນຜູ້ມີຫິຣິໂອດຕັບປະແລ້ວ ມີກາຍສະມາຈານ ວະຈີສະມາຈານ ມະໂນສະມາຈານ ແລະ ອາຊີວະບໍລິສຸດແລ້ວ ພໍລະດ້ວຍກິດພຽງທໍ່ນີ້ ເຮົາທັງຫຼາຍເຮັດກິດສຳເລັດແລ້ວ ດ້ວຍກິດພຽງທໍ່ນີ້ ປະໂຫຍດຈາກຄວາມເປັນສະມະນະເຮົາທັງຫຼາຍກໍໄດ້ບັນລຸແລ້ວໂດຍລຳດັບ ກິດອື່ນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກບໍ່ມີ" ທ່ານທັງຫຼາຍເຖິງຄວາມຍິນດີດ້ວຍກິດພຽງທໍ່ນັ້ນ ເຮົາຂໍບອກທ່ານທັງຫຼາຍ ຂໍເຕືອນທ່ານທັງຫຼາຍ ເມື່ອກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກຍັງມີຢູ່ ປະໂຫຍດຈາກຄວາມເປັນສະມະນະທີ່ທ່ານທັງຫຼາຍປາຖະໜາ ຢ່າໄດ້ເສື່ອມໄປເລີຍ

## ສັງລວມອິນຊີ

[໔໘໑] ກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປ ເປັນແນວໃດ?

ຄື ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍ ຈັກເປັນຜູ້ຄຸ້ມຄອງທະວານ ແລ້ວໃນອິນຊີທັງຫຼາຍ ເຫັນຮູບທາງຕາແລ້ວ ບໍ່ຮວບຖື ບໍ່ແຍກຖື ຈັກປະຕິບັດເພື່ອຄວາມສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດຄອບງຳໄດ້ ຈັກຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ

ຟັງສຽງທາງຫູ ໆລໆ

ດົມກິ່ນທາງດັງ ฯລฯ
ຊີມຣົດທາງລີ້ນ ฯລฯ
ຖືກຕ້ອງໂຜດຖັບພະທາງກາຍ ฯລฯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ຮວບຖື ບໍ່ແຍກຖື ຈັກປະຕິບັດເພື່ອຄວາມສັງລວມ ມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດຄອບງຳໄດ້ ຈັກຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ” ບາງເທື່ອທ່ານທັງຫຼາຍຈະມີຄວາມຄິດແນວນີ້ວ່າ “ເຮົາທັງຫຼາຍເປັນຜູ້ມີຫິຣິໂອດຕັບປະແລ້ວ ມີກາຍສະມາຈານບໍລິສຸດ ວະຈີສະມາຈານບໍລິສຸດ ມະໂນສະມາຈານບໍລິສຸດ ອາຊີວະບໍລິສຸດແລ້ວ ແລະ ເປັນຜູ້ຄຸ້ມຄອງທະວານໄດ້ແລ້ວໃນອິນຊີທັງຫຼາຍ ພໍລະດ້ວຍກິດພຽງທໍ່ນີ້ ເຮົາທັງຫຼາຍເຮັດກິດສຳເລັດແລ້ວ ດ້ວຍກິດພຽງທໍ່ນີ້ ປະໂຫຍດຈາກຄວາມເປັນສະມະນະເຮົາທັງຫຼາຍກໍໄດ້ບັນລຸແລ້ວໂດຍລຳດັບ ກິດອື່ນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກບໍ່ມີ” ທ່ານທັງຫຼາຍ ເຖິງຄວາມຍິນດີດ້ວຍກິດພຽງທໍ່ນັ້ນ ເຮົາຂໍບອກທ່ານທັງຫຼາຍ ຂໍເຕືອນທ່ານທັງຫຼາຍ ເມື່ອກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກຍັງມີຢູ່ ປະໂຫຍດຈາກຄວາມເປັນສະມະນະທີ່ທ່ານທັງຫຼາຍປາຖະໜາ ຢ່າໄດ້ເສື່ອມໄປເລີຍ

## ຮູ້ຈັກປະມານໃນໂພຊະນະ

[໔໘໘] ກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປ ເປັນແນວໃດ?

ຄື ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ “ເຮົາທັງຫຼາຍຈັກຮູ້ຈັກປະມານໃນໂພຊະນະ ຈັກພິຈາລະນາໂດຍແຍກຄາຍແລ້ວກືນກິນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອຄວາມມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ພຽງເພື່ອກາຍນີ້ດຳລົງຢູ່ໄດ້ ເພື່ອໃຫ້ຊີວິຕິນຊີ ເປັນໄປເພື່ອບຳບັດຄວາມຫິວ ເພື່ອອະນຸເຄາະພົມມະຈັນ ໂດຍອຸບາຍນີ້ ເຮົາຈັກກຳຈັດເວທະນາເກົ່າເສຍໄດ້ ແລະ ຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳລົງຢູ່ແຫ່ງຊີວິດ ຄວາມບໍ່ມີໂທດ ແລະ ການຢູ່ໂດຍຜາສຸກຈັກມີແກ່ເຮົາ” ບາງເທື່ອທ່ານທັງຫຼາຍຈະມີຄວາມຄິດແນວນີ້ວ່າ “ເຮົາທັງຫຼາຍເປັນຜູ້ມີຫິຣິໂອດຕັບປະແລ້ວ ມີກາຍສະມາຈານບໍລິສຸດ ວະຈີສະມາຈານບໍລິສຸດ ມະໂນສະມາຈານບໍລິສຸດ ອາຊີວະບໍລິສຸດ ເປັນຜູ້ຄຸ້ມຄອງທະວານແລ້ວ ໃນອິນຊີທັງຫຼາຍ ແລະຈັກຮູ້ຈັກປະມານໃນໂພຊະນະ ພໍລະ ດ້ວຍກິດພຽງທໍ່ນີ້ ເຮົາທັງຫຼາຍເຮັດກິດສຳເລັດແລ້ວ ດ້ວຍກິດພຽງທໍ່ນີ້ ປະໂຫຍດຈາກຄວາມເປັນສະມະນະເຮົາທັງຫຼາຍກໍໄດ້ບັນລຸແລ້ວໂດຍລຳດັບ ກິດອື່ນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກບໍ່ມີ” ທ່ານທັງຫຼາຍ ເຖິງຄວາມຍິນດີດ້ວຍກິດພຽງທໍ່ນັ້ນ ເຮົາຂໍບອກທ່ານທັງຫຼາຍ ຂໍເຕືອນທ່ານທັງຫຼາຍ ເມື່ອກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກຍັງມີຢູ່ ປະໂຫຍດຈາກຄວາມເປັນສະມະນະທີ່ທ່ານທັງຫຼາຍປາຖະໜາ ຢ່າໄດ້ເສື່ອມໄປເລີຍ

## ຕື່ນພ່ຳເພັງພຽນ

[໔໘໓] ກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປ ເປັນແນວໃດ?

ຄື ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກເປັນຜູ້ປະກອບຄວາມພຽນໃນທຳເປັນເຄື່ອງຕື່ນຢ່າງຕໍ່ເນື່ອງ ຈັກຊຳລະຈິດໃຫ້ບໍລິສຸດຈາກທຳອັນເປັນເຄື່ອງຂັດຂວາງດ້ວຍການຍ່າງຈົງກົມ ແລະ ການນັ່ງຕະຫຼອດວັນ ຈັກຊຳລະຈິດໃຫ້ບໍລິສຸດຈາກທຳເປັນເຄື່ອງຂັດຂວາງດ້ວຍການຍ່າງຈົງກົມ ດ້ວຍການນັ່ງຕະຫຼອດປະຖົມຍາມແຫ່ງຣາຕີ ສຳເລັດການນອນເໝືອນຣາດຊະສີໂດຍຕະແຄງຂ້າງເບື້ອງຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສຳປະຊັນຍະ ໝາຍໃຈວ່າຈະລຸກຂຶ້ນຕະຫຼອດມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນຊຳລະຈິດໃຫ້ບໍລິສຸດຈາກທຳເປັນເຄື່ອງຂັດຂວາງດ້ວຍການຍ່າງຈົງກົມ ດ້ວຍການນັ່ງຕະຫຼອດປັດສິມຍາມແຫ່ງຣາຕີ" ບາງເທື່ອ ທ່ານທັງຫຼາຍຈະມີຄວາມຄິດແນວນີ້ວ່າ "ເຮົາທັງຫຼາຍ ເປັນຜູ້ມີຫິຣິໂອດຕັບປະແລ້ວ ມີກາຍສະມາຈານບໍລິສຸດ ວະຈີສະມາຈານບໍລິສຸດ ມະໂນສະມາຈານບໍລິສຸດ ອາຊີວະບໍລິສຸດ ເປັນຜູ້ຄຸ້ມຄອງທະວານແລ້ວໃນອິນຊີທັງຫຼາຍ ແລະຮູ້ຈັກປະມານໃນໂພຊະນະ ປະກອບຄວາມພຽນໃນທຳເປັນເຄື່ອງຕື່ນຢ່າງຕໍ່ເນື່ອງແລ້ວ ພໍລະດ້ວຍກິດພຽງທໍ່ນີ້ ເຮົາທັງຫຼາຍເຮັດກິດສຳເລັດແລ້ວ ດ້ວຍກິດພຽງທໍ່ນີ້ ປະໂຫຍດຈາກຄວາມເປັນສະມະນະ ເຮົາທັງຫຼາຍກໍໄດ້ບັນລຸແລ້ວໂດຍລຳດັບ ກິດອື່ນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກບໍ່ມີ" ທ່ານທັງຫຼາຍເຖິງຄວາມ ຍິນດີດ້ວຍກິດພຽງທໍ່ນັ້ນ ເຮົາຂໍບອກທ່ານທັງຫຼາຍ ຂໍເຕືອນທ່ານທັງຫຼາຍ ເມື່ອກິດ ທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກຍັງມີຢູ່ ປະໂຫຍດຈາກຄວາມເປັນສະມະນະທີ່ທ່ານທັງຫຼາຍປາຖະໜາ ຢ່າໄດ້ເສື່ອມໄປເລີຍ

## ຈະເລີນສະຕິສຳປະຊັນຍະ

[໔໘໔] ກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປ ເປັນແນວໃດ?

ຄື ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກເປັນຜູ້ມີສະຕິສຳປະຊັນຍະ ທຳຄວາມຮູ້ສຶກຕົວໃນການກ້າວໄປ ການຖອຍກັບ ການແນມເບິ່ງ ການຫລຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດ ແລະ ຈີວອນ ການສັນ ການດື່ມ ການຫຍ້ຳ ການຊີມ ການຖ່າຍອຸດຈາຣະ ປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການມິດ" ບາງເທື່ອທ່ານທັງຫຼາຍຈະມີຄວາມຄິດແນວນີ້ວ່າ "ເຮົາທັງຫຼາຍເປັນຜູ້ມີຫິຣິໂອດຕັບປະແລ້ວ ມີກາຍສະມາຈານບໍລິສຸດ ວະຈີສະມາຈານບໍລິສຸດ ມະໂນສະມາຈານບໍລິສຸດ ອາຊີວະບໍລິສຸດແລ້ວ ເປັນຜູ້ຄຸ້ມຄອງທະວານແລ້ວໃນອິນຊີທັງຫຼາຍ ຮູ້ຈັກປະມານໃນໂພຊະນະ ປະກອບຄວາມພຽນໃນທຳເປັນເຄື່ອງຕື່ນຢ່າງຕໍ່ເນື່ອງ ແລະ ມີສະຕິສຳປະຊັນຍະແລ້ວ ພໍລະ ດ້ວຍກິດພຽງທໍ່ນີ້ ເຮົາທັງຫຼາຍເຮັດກິດສຳເລັດແລ້ວ ດ້ວຍກິດພຽງທໍ່ນີ້ ປະໂຫຍດຈາກຄວາມເປັນສະມະ

ນະເຮົາທັງຫຼາຍກໍໄດ້ບັນລຸແລ້ວໂດຍລຳດັບ ກິດອື່ນໃດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກບໍ່ມີແລ້ວ" ທ່ານທັງຫຼາຍ ຍິນດີດ້ວຍກິດພຽງທີ່ນັ້ນ ເຮົາຂໍບອກທ່ານທັງຫຼາຍ ຂໍເຕືອນທ່ານທັງຫຼາຍ ເມື່ອກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປອີກຍັງມີຢູ່ ປະໂຫຍດຈາກຄວາມເປັນສະມະນະທີ່ທ່ານທັງຫຼາຍປາຖະໜາ ຢ່າໄດ້ເສື່ອມໄປເລີຍ

## ການລະນິວອນ ໕

[໔໔໕] ກິດທີ່ຄວນເຮັດໃຫ້ຍິ່ງຂຶ້ນໄປ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພັກຢູ່ໃນເສນາສະນະອັນງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກຜາ ຖ້ຳ ປ່າຊ້າ ປ່າຕຶບ ກາງແຈ້ງ ກອງເຟືອງ ທ່ານກັບຈາກບິນທະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິສະເພາະໜ້າ ທ່ານລະອະພິດຊາ (ຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ) ໃນໂລກ ມີໃຈປາສະຈາກອະພິດຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນແກ່ສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍ ຄື ພະຍາບາດ ລະຖີນະມິດທະ (ຄວາມຫົດຫູ່ແລະຄວາມງ່ວມເຫງົາ) ປາສະຈາກຖີນະມິດທະ ກຳນົດແສງສະຫວ່າງ ມີສະຕິສຳປະຊັນຍະຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ(ຄວາມຟຸ້ງຊ່ານແລະຄວາມລຳຄານໃຈ) ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະຫງົບຢູ່ພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີວິຈິກິດສາໃນກຸສົນທຳຢູ່ ຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

[໔໔໖] ພິກຂຸທັງຫຼາຍ ປຽບເໝືອນ ຄົນກູ້ໜີ້ມາລົງທຶນຈົນປະສົບຜົນສຳເລັດ ໃຊ້ໜີ້ເກົ່າທີ່ເປັນຕົ້ນທຶນຈົນໝົດ ເກັບກຳໄລທີ່ເຫຼືອໄວ້ເປັນຄ່າລ້ຽງເບິ່ງບຸດພັນລະຍາ ເຂົາຄິດວ່າ "ແຕ່ກ່ອນເຮົາກູ້ໜີ້ມາລົງທຶນ ການງານສຳເລັດຜົນດີໄດ້ໃຊ້ໜີ້ເກົ່າທີ່ຢືມມາລົງທຶນໝົດແລ້ວ ແລະກຳໄລກໍຍັງມີເຫຼືອໄວ້ເປັນຄ່າລ້ຽງເບິ່ງບຸດພັນລະຍາ" ຍ້ອນຄວາມບໍ່ມີໜີ້ສິນເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

ຫຼື ປຽບເໝືອນ ຄົນເຈັບໄຂ້ເຖິງຄວາມລຳບາກ ເຈັບໜັກ ບໍຣິໂພກອາຫານບໍ່ໄດ້ ບໍ່ມີກຳລັງ ຕໍ່ມາຫາຍປ່ວຍ ບໍຣິໂພກອາຫານໄດ້ ກັບມາມີກຳລັງ ເຂົາຄິດວ່າ "ແຕ່ກ່ອນ ເຮົາເຈັບປ່ວຍ ເຖິງຄວາມລຳບາກ ເຈັບໜັກ ບໍຣິໂພກອາຫານບໍ່ໄດ້ ບໍ່ມີກຳລັງ ບັດນີ້ຫາຍປ່ວຍ ບໍຣິໂພກອາຫານໄດ້ ມີກຳລັງເປັນປົກກະຕິ" ຍ້ອນການຫາຍຈາກການເຈັບໄຂ້ເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

ຫຼື ປຽບເໝືອນ ຄົນຕ້ອງໂທດຖືກຄຸມຂັງໃນຄຸກ ຕໍ່ມາພົ້ນໂທດອອກຈາກຄຸກໂດຍສະ

ຫວັດດີພາບ ບໍ່ຕ້ອງເສຍຄ່າໃຊ້ຈ່າຍໃດ ໆ ເຂົາຄິດວ່າ "ແຕ່ກ່ອນເຮົາຕ້ອງໂທດຖືກຄຸມຂັງໃນຄຸກ ແຕ່ບັດນີ້ ພົ້ນໂທດອອກຈາກຄຸກໂດຍສະຫວັດດີພາບ ບໍ່ຕ້ອງເສຍຄ່າໃຊ້ຈ່າຍໃດ ໆ" ຍ້ອນການພົ້ນຈາກຄຸກເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

ຫຼື ປຽບເໝືອນ ຄົນທີ່ຕົກເປັນຂ້າທາດ ເພິ່ງຕົວເອງບໍ່ໄດ້ ຕ້ອງເພິ່ງຜູ້ອື່ນ ຈະໄປໄສຕາມໃຈມັກກໍບໍ່ໄດ້ ຕໍ່ມາພົ້ນຈາກຄວາມເປັນຂ້າທາດ ເພິ່ງຕົວເອງໄດ້ ບໍ່ຕ້ອງເພິ່ງຜູ້ອື່ນ ເປັນອິດສະຫຼະແກ່ຕົວເອງ ຈະໄປໄສກໍໄດ້ຕາມໃຈມັກ ເຂົາຄິດວ່າ "ແຕ່ກ່ອນເຮົາເປັນຂ້າທາດ ເພິ່ງຕົວເອງບໍ່ໄດ້ ຕ້ອງເພິ່ງຜູ້ອື່ນ ຈະໄປໄສຕາມໃຈມັກກໍບໍ່ໄດ້ ບັດນີ້ພົ້ນຈາກຄວາມເປັນຂ້າທາດແລ້ວ ເພິ່ງຕົວເອງໄດ້ແລ້ວ ບໍ່ຕ້ອງເພິ່ງຜູ້ອື່ນ ເປັນອິດສະຫຼະແກ່ຕົວເອງ ຈະໄປໄສກໍໄດ້ຕາມໃຈມັກ" ຍ້ອນຄວາມເປັນອິດສະຫຼະແກ່ຕົນເອງເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ

ຫຼື ປຽບເໝືອນ ຄົນມີຊັບສົມບັດ ເດີນທາງໄກກັນດານ ຕໍ່ມາເຂົາຂ້າມພົ້ນທາງກັນດານນັ້ນໄປໄດ້ໂດຍສະຫວັດດີພາບ ບໍ່ຕ້ອງເສຍຄ່າໃຊ້ຈ່າຍໃດ ໆ ເຂົາຄິດວ່າ "ແຕ່ກ່ອນເຮົາມີຊັບສົມບັດ ເດີນທາງໄກກັນດານ ບັດນີ້ ຂ້າມພົ້ນທາງກັນດານໄດ້ໂດຍສະຫວັດດີພາບ ບໍ່ຕ້ອງເສຍຄ່າໃຊ້ຈ່າຍໃດ ໆ" ຍ້ອນການພົບພູມສະຖານອັນຮົ່ມເຢັນເປັນເຫດ ເຂົາຈຶ່ງໄດ້ຮັບຄວາມເບີກບານໃຈ ແລະ ຄວາມສຸກໃຈ ແມ່ນສັນໃດ

ພິກຂຸທັງຫຼາຍ ພິກຂຸກໍຄືກັນສັນນັ້ນ ພິຈາລະນາເຫັນນິວອນ ໕ ປະການນີ້ທີ່ຕົນຍັງລະບໍ່ໄດ້ເໝືອນໜີ້ ໂຣກ ຄຸກ ຄວາມເປັນຂ້າທາດ ແລະ ທາງໄກກັນດານ ແລະ ພິຈາລະນາເຫັນນິວອນ ໕ ປະການນີ້ທີ່ຕົນລະໄດ້ແລ້ວ ເໝືອນຄວາມບໍ່ມີໜີ້ ຄວາມບໍ່ມີໂຣກ ການພົ້ນໂທດຈາກຄຸກ ຄວາມເປັນອິດສະຫຼະແກ່ຕົນເອງ ແລະ ພູມສະຖານອັນສະຫງົບຮົ່ມເຢັນ

## ອຸປະມາຊານ ໔

[໔໘໗] ພິກຂຸນັ້ນລະນິວອນ ໕ ປະການນີ້ອັນເປັນເຄື່ອງເສົ້າໝອງແຫ່ງຈິດ ເປັນເຄື່ອງເຮັດປັນຍາໃຫ້ຖອຍກຳລັງໄດ້ແລ້ວ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ທ່ານທຳກາຍນີ້ໃຫ້ຊຸ່ມຊື່ນ ອີ່ມເອີບ ເຕັມປ່ຽມດ້ວຍປີຕິ ແລະ ສຸກອັນເກີດຈາກວິເວກ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິ ແລະ ສຸກອັນເກີດຈາກວິເວກຈະບໍ່ຖືກຕ້ອງ ປຽບເໝືອນ ພະນັກງານອາບນໍ້າ ຫຼື ລູກມືພະນັກງານອາບນໍ້າຜູ້ຊ່ຽວຊານ ຖອກຜົງຖູຕົວລົງໃນພາຊະນະສຳຣິດແລ້ວເອົານໍ້າປະພົມໃຫ້ຕິດເປັນກ້ອນ ພໍຮອດຍາມແລງ ກ້ອນຖູຕົວທີ່ຢາງຊຶມໄປຈັບກໍຕິດກັນມິດບໍ່ກະຈາຍອອກ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ທຳກາຍນີ້ໃຫ້ຊຸ່ມຊື່ນ ອີ່ມເອີບ ເຕັມປ່ຽມດ້ວຍປີຕິແລະສຸກອັນເກີດ

ຈາກວິເວກ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິ ແລະ ສຸກອັນເກີດຈາກວິເວກຈະບໍ່ຖືກຕ້ອງ

[໔໘໗] ພິກຂຸທັງຫຼາຍ ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ທ່ານທຳກາຍນີ້ໃຫ້ຊຸ່ມຊື່ນ ອີ່ມເອີບ ເຕັມປ່ຽມ ຊາບຊ່ານຢູ່ດ້ວຍປີຕິແລະສຸກອັນເກີດຈາກສະມາທິ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິແລະສຸກອັນເກີດຈາກສະມາທິຈະບໍ່ຖືກຕ້ອງ ປຽບເໝືອນ ແມ່ນ້ຳເລິກ ເປັນວັງວົນ ບໍ່ມີທາງທີ່ກະແສນ້ຳຈະໄຫຼເຂົ້າໄປໄດ້ ບໍ່ວ່າທາງທິດຕະເວັນອອກ ທິດຕະເວັນຕົກ ທິດເໜືອ ແລະທິດໃຕ້ ຝົນກໍບໍ່ຕົກຮຳໃສ່ ແຕ່ມີກະແສນ້ຳເຢັນທີ່ຜຸດຂຶ້ນຈາກແມ່ນ້ຳນັ້ນ ເຮັດແມ່ນ້ຳນັ້ນໃຫ້ຊຸ່ມຊື່ນ ເອີບອາບເຕັມຢູ່ສະເໝີ ເນືອງນອງໄປດ້ວຍນ້ຳເຢັນ ບໍ່ມີສ່ວນໃດຂອງແມ່ນ້ຳນັ້ນທີ່ນ້ຳເຢັນຈະບໍ່ມີ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ທຳກາຍນີ້ໃຫ້ຊຸ່ມຊື່ນ ອີ່ມເອີບ ເຕັມປ່ຽມດ້ວຍປີຕິແລະສຸກອັນເກີດຈາກສະມາທິ ຮູ້ສຶກຊາບຊ່ານຢູ່ ບໍ່ມີ ສ່ວນໃດຂອງຮ່າງກາຍທີ່ປີຕິແລະສຸກອັນເກີດຈາກສະມາທິຈະບໍ່ຖືກຕ້ອງ

[໔໘໙] ພິກຂຸທັງຫຼາຍ ອີກປະການໜຶ່ງ ຍ້ອນປີຕິຈາງຄາຍໄປ ພິກຂຸມີ ອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍ ສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ທ່ານທຳກາຍນີ້ໃຫ້ຊຸ່ມຊື່ນ ອີ່ມເອີບ ເຕັມປ່ຽມດ້ວຍສຸກອັນບໍ່ມີປີຕິ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ສຸກອັນບໍ່ມີ ປີຕິຈະບໍ່ຖືກຕ້ອງ ປຽບເໝືອນໃນກໍອຸບົນ ໃນກໍປະທຸມ ຫຼື ໃນກໍບຸນທະຣິກ ດອກບົວ ດອກບົວຫຼວງ ຫຼື ດອກບົວຂາວລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຍັງບໍ່ພົ້ນນ້ຳ ຈົມຢູ່ໃຕ້ນ້ຳແລະມີນ້ຳຫຼໍ່ລ້ຽງໄວ້ ດອກບົວເຫຼົ່ານັ້ນຊຸ່ມຊື່ນ ເອີບອາບ ບໍລິບູນ ຊຶມຊາບດ້ວຍນ້ຳເຢັນຕັ້ງແຕ່ຍອດຈົດເຖິງເຫງົ້າ ບໍ່ມີສ່ວນໃດທີ່ນ້ຳເຢັນຈະບໍ່ຖືກຕ້ອງ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ທຳກາຍນີ້ໃຫ້ຊຸ່ມຊື່ນ ອີ່ມເອີບ ເຕັມປ່ຽມດ້ວຍສຸກອັນບໍ່ມີປີຕິ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ສຸກອັນບໍ່ມີປີຕິຈະບໍ່ຖືກຕ້ອງ

[໔໙໐] ພິກຂຸທັງຫຼາຍ ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ທ່ານມີໃຈອັນບໍລິສຸດຜຸດຜ່ອງ ນັ່ງແຜ່ໄປທົ່ວກາຍນີ້ ບໍ່ມີສ່ວນໃດຂອງຮ່າງກາຍທີ່ໃຈອັນບໍລິສຸດຜຸດຜ່ອງຈະບໍ່ຖືກຕ້ອງ ປຽບເໝືອນ ຄົນນັ່ງໃຊ້ຜ້າຂາວຄຸມຕົວຕະຫຼອດຫົວ ບໍ່ມີສ່ວນໃດຂອງຮ່າງກາຍທີ່ຜ້າຂາວຈະບໍ່ປົກຄຸມ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ມີໃຈອັນບໍລິສຸດຜຸດຜ່ອງ ນັ່ງແຜ່ໄປທົ່ວກາຍນີ້ ບໍ່ມີສ່ວນໃດຂອງຮ່າງກາຍທີ່ໃຈອັນບໍລິສຸດຜຸດຜ່ອງຈະບໍ່ຖືກຕ້ອງ

## ອຸປະມາວິດຊາ ៣

[៤៣๑] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກ ຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອບຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ๑ ຊາດແດ່ ៤ ຊາດແດ່ ฯລฯ[๑] ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດຢ່າງນີ້ ປຽບເໝືອນ ບຸຣຸດອອກຈາກເຮືອນຂອງຕົນໄປສູ່ເຮືອນອື່ນ ອອກຈາກເຮືອນແມ່ນນັ້ນໄປສູ່ອີກເຮືອນໜຶ່ງ ອອກຈາກເຮືອນນັ້ນແລ້ວກັບມາສູ່ເຮືອນຂອງຕົນຕາມເກົ່າ ເຂົາຈະເພິ່ງຣະນຶກໄດ້ວ່າ "ເຮົາອອກຈາກເຮືອນຂອງຕົນໄປສູ່ເຮືອນນັ້ນ ໃນເຮືອນນັ້ນ ເຮົາໄດ້ຢືນແນວນີ້ ໄດ້ນັ່ງແນວນີ້ ໄດ້ເວົ້າແນວນີ້ ໄດ້ມິດແນວນີ້ ອອກຈາກເຮືອນນັ້ນໄປສູ່ເຮືອນນັ້ນ ແມ່ນໃນເຮືອນນັ້ນ ເຮົາກໍໄດ້ຢືນແນວນີ້ ໄດ້ນັ່ງແນວນີ້ ໄດ້ເວົ້າແນວນີ້ ໄດ້ມິດແນວນີ້ ອອກຈາກເຮືອນນັ້ນແລ້ວກັບມາສູ່ເຮືອນຂອງຕົນຕາມເກົ່າ" ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຍ່ອມຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ๑ ຊາດແດ່ ៤ ຊາດແດ່ ฯລฯ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້

[៤៣៤] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກ ຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ ฯລฯ[៤] ເຮືອນ ៤ ຫຼັງ ມີປະຕູຢູ່ກົງກັນ ບຸຣຸດຜູ້ມີຕາດີ ຢືນຢູ່ສູນກາງຈະເພິ່ງເຫັນໝູ່ມະນຸດກຳລັງເຂົ້າສູ່ເຮືອນແດ່ ກຳລັງອອກຈາກເຮືອນແດ່ ກຳລັງຍ່າງໄປມາແດ່ ກຳລັງທ່ຽວໄປຂ້າງນັ້ນຂ້າງນີ້ແດ່ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຍ່ອມຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ ฯລฯ

[៤៣៣] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກ ຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຍ່ອມຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣທະຄາມີນີປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາສະວະ ແລະອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ" ປຽບເໝືອນ ສະນ້ຳໃສ ສະອາດ ບໍ່ຂຸ່ນມົວ ເທິງຍອດພູ ຄົນ

ຕາດີຢືນຢູ່ຂອບສະນັ້ນຈະເພິ່ງແນມເຫັນຫອຍໂຂ່ງ ຫອຍກາບ ກ້ອນແຮ່ ແລະ ກ້ອນຫີນ ຫຼື ຝູງປາກຳລັງລອຍໄປມາຢູ່ແດ່ ຢຸດຢູ່ແດ່ໃນສະນັ້ນ ກໍຄິດແນວນີ້ວ່າ "ສະນ້ຳນີ້ໃສສະອາດ ບໍ່ຂຸ່ນມົວ ຫອຍໂຂ່ງແລະຫອຍກາບ ກ້ອນແຮ່ ແລະ ກ້ອນຫີນຫຼືຝູງປາເຫຼົ່ານີ້ກຳລັງລ່ອງລອຍໄປມາຢູ່ກໍມີ ຢຸດຢູ່ກໍມີໃນສະນັ້ນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຍ່ອມຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ໆລໆ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ"

## ສະມັນຍາຕ່າງ ໆ ຂອງພິກຂຸ

[໔໓໘] ພິກຂຸທັງຫຼາຍ ພິກຂຸນີ້ຮຽກວ່າ "ສະມະນະແດ່ ພາມແດ່ ນະຫາຕະກະແດ່ ເວທະຄູແດ່ ໂສຕະຕິຍະແດ່ ອະຣິຍະແດ່ ອະຣະຫັນແດ່"

ພິກຂຸຊື່ວ່າສະມະນະ ເປັນແນວໃດ?

ຄື ບາບອະກຸສົນທຳທີ່ກໍ່ໃຫ້ເກີດຄວາມເສົ້າໝອງ ນຳໄປເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ມໍລະນະຕໍ່ໄປ ພິກຂຸນັ້ນ ລະງັບໄດ້ແລ້ວ ພິກຂຸຊື່ວ່າສະມະນະ ເປັນຢ່າງນີ້

ພິກຂຸຊື່ວ່າພາມ ເປັນແນວໃດ?

ຄື ບາບອະກຸສົນທຳທີ່ກໍ່ໃຫ້ເກີດຄວາມເສົ້າໝອງ ນຳໄປເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ມໍລະນະຕໍ່ໄປ ພິກຂຸນັ້ນ ລອຍໄດ້ແລ້ວ ພິກຂຸຊື່ວ່າພາມ ເປັນຢ່າງນີ້

ພິກຂຸຊື່ວ່າ ນະຫາຕະກະ ເປັນແນວໃດ?

ຄື ບາບອະກຸສົນທຳທີ່ກໍ່ໃຫ້ເກີດຄວາມເສົ້າໝອງ ນຳໄປເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ມໍລະນະຕໍ່ໄປ ພິກຂຸນັ້ນ ອາບລ້າງແລ້ວ ພິກຂຸຊື່ວ່ານະຫາຕະກະ ເປັນແນວນີ້

ພິກຂຸຊື່ວ່າ ເວທະຄູ ເປັນແນວໃດ?

ຄື ບາບອະກຸສົນທຳ ທີ່ກໍ່ໃຫ້ເກີດຄວາມເສົ້າໝອງ ນຳໄປເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ມໍລະນະຕໍ່ໄປ ພິກຂຸນັ້ນ ຮູ້ແຈ້ງແລ້ວ ພິກຂຸຊື່ວ່າເວທະຄູ ເປັນແນວນີ້

ພິກຂຸຊື່ວ່າ ໂສຕະຕິຍະ ເປັນແນວໃດ?

ຄື ບາບອະກຸສົນທຳ ທີ່ກໍ່ໃຫ້ເກີດຄວາມເສົ້າໝອງ ນຳໄປເກີດໃນພົບໃໝ່ ມີຄວາມກະວົນ

ກະວາຍ ມີທຸກເປັນວິບາກ ໃຫ້ມີຊາດ ຊະຣາ ມໍລະນະຕໍ່ໄປ ພິກຂຸນັ້ນ ເຮັດໃຫ້ຫຼັບມົດແລ້ວ ພິກຂຸຊື່ວ່າໂສຕະຕິຍະ ເປັນແນວນີ້

ພິກຂຸຊື່ວ່າ ອະຣິຍະ ເປັນແນວໃດ?

ຄື ບາບອະກຸສົນທຳ ທີ່ກໍ່ໃຫ້ເກີດຄວາມເສົ້າໝອງ ນຳໄປເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ມໍລະນະຕໍ່ໄປ ພິກຂຸນັ້ນ ທຳລາຍໄດ້ແລ້ວ ພິກຂຸຊື່ວ່າອະຣິຍະ ເປັນແນວນີ້

ພິກຂຸຊື່ວ່າ ອະຣະຫັນ ເປັນແນວໃດ?

ຄື ບາບອະກຸສົນທຳ ທີ່ກໍ່ໃຫ້ເກີດຄວາມເສົ້າໝອງ ນຳໄປເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ມໍລະນະຕໍ່ໄປ ຫ່າງໄກຈາກພິກຂຸນັ້ນ ພິກຂຸຊື່ວ່າອະຣະຫັນ ເປັນແນວນີ້"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາອັດສະປຸຣະສູດທີ ໙ ຈົບ**

# ໑໐. ຈູລະອັດສະປຸຣະສູດ

## ວ່າດ້ວຍເຫດການໃນອັດສະປຸຣະນິຄົມ ສູດນ້ອຍ

## ການບວດເໝືອນມີດສອງຄົມ

[໔໓໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້ າປະທັບຢູ່ທີ່ອັດສະປຸຣະນິຄົມຂອງພຣະຣາດຊະກຸມານຊາວອັງຄະ ໃນແຄວ້ນອັງຄະ ໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ໝູ່ຊົນຍ່ອມຮູ້ຈັກທ່ານທັງຫຼາຍວ່າ "ສະມະນະ ສະມະນະ" ກໍທ່ານ

ທັງຫຼາຍເມື່ອເຂົາຖາມວ່າ "ທ່ານທັງຫຼາຍເປັນອັນໃດ" ກໍປະຕິຍານວ່າ "ເຮົາທັງຫຼາຍເປັນສະມະນະ" ເມື່ອທ່ານທັງຫຼາຍນັ້ນ ຜູ້ມີຊື່ຢ່າງນີ້ ມີປະຕິຍານແນວນີ້ ກໍຄວນຕັ້ງໃຈຮູ້ວ່າ "ເຮົາທັງຫຼາຍຈະປະຕິບັດຕາມຂໍ້ປະຕິບັດທີ່ສົມຄວນແກ່ສະມະນະ ເມື່ອເຮົາທັງຫຼາຍປະຕິບັດຢູ່ແນວນີ້ ຊື່ແລະປະຕິຍານນີ້ຂອງເຮົາທັງຫຼາຍກໍຈັກເປັນຄວາມຈິງຕາມຄໍາປະຕິຍານນັ້ນ ແລະ ເມື່ອເຮົາທັງຫຼາຍໃຊ້ສອຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານຂອງທາຍົກເຫຼົ່າໃດ ປັດໄຈທັງຫຼາຍນັ້ນຂອງທາຍົກເຫຼົ່ານັ້ນ ກໍຈັກມີຜົນຫຼາຍ ມີອານິສົງຫຼາຍຍ້ອນເຮົາທັງຫຼາຍອີກປະການໜຶ່ງ ບັນພະຊານີ້ຂອງເຮົາທັງຫຼາຍກໍຈັກບໍ່ເປັນໝັນ ຈັກມີຜົນ ມີຄວາມຈະເລີນ"

ພິກຂຸທັງຫຼາຍ ທ່ານທັງຫຼາຍຄວນຕັ້ງໃຈຮູ້ແນວນີ້ແລ

[໔໓໖] ພິກຂຸຊື່ວ່າ ເປັນຜູ້ບໍ່ປະຕິບັດຕາມຂໍ້ປະຕິບັດທີ່ສົມຄວນແກ່ສະມະນະ ເປັນແນວໃດ?

ຄື ພິກຂຸອົງໃດອົງໜຶ່ງ ມີອະພິດຊາຫຼາຍ ຍັງລະອະພິດຊາບໍ່ໄດ້ ມີຈິດພະຍາບາດ ຍັງລະພະຍາບາດບໍ່ໄດ້ ເປັນຜູ້ມັກໂກດ ຍັງລະຄວາມມັກໂກດບໍ່ໄດ້ ມີຄວາມມັດໂກດ ຍັງລະຄວາມມັດໂກດບໍ່ໄດ້ ມີຄວາມລົບຫລູ່ ຍັງລະຄວາມລົບຫລູ່ບໍ່ໄດ້ ມີຄວາມຕີສະເໝີ ຍັງລະຄວາມຕີສະເໝີບໍ່ໄດ້ ມີຄວາມຣິດສະຫຍາ ຍັງລະຄວາມຣິດສະຫຍາບໍ່ໄດ້ ມີຄວາມຂີ້ຖີ່ ຍັງລະຄວາມຂີ້ຖີ່ບໍ່ໄດ້ ມີຄວາມໂອ້ອວດ ຍັງລະຄວາມໂອ້ອວດບໍ່ໄດ້ ມີມານຍາ ຍັງລະມານຍາບໍ່ໄດ້ ມີຄວາມປາຖະໜາທີ່ເປັນບາບ ຍັງລະຄວາມປາຖະໜາທີ່ເປັນບາບບໍ່ໄດ້ ມີຄວາມເຫັນຜິດ ຍັງລະຄວາມເຫັນຜິດບໍ່ໄດ້ ຍ້ອນຍັງລະກິເລດທີ່ເປັນມົນທິນຂອງສະມະນະ ເປັນໂທດຂອງສະມະນະ ເປັນເໝືອນນໍ້າຝາດຂອງສະມະນະ ເຊິ່ງເປັນເຫດໃຫ້ເກີດໃນອະບາຍ ແລະ ມີວິບາກທີ່ຈະເພິ່ງສະເຫວີຍໃນທຸຄະຕິເຫຼົ່ານີ້ບໍ່ໄດ້ ເຮົາຈຶ່ງກ່າວວ່າ "ພິກຂຸນັ້ນ ເປັນຜູ້ບໍ່ປະຕິບັດຕາມຂໍ້ປະຕິບັດທີ່ສົມຄວນແກ່ສະມະນະ"

ພິກຂຸທັງຫຼາຍ ອຸປະມາເໝືອນອາວຸດທີ່ຊື່ ມະຕະຊະ ມີຄົມ ໒ ຂ້າງ ຊຸບແລະລັບດີແລ້ວສອດໄວ້ໃນຝັກ ແມ່ນສັນໃດ ເຮົາກ່າວວ່າ ບັນພະຊາຂອງພິກຂຸນີ້ກໍມີອຸປະມາສັນນັ້ນ

## ບໍ່ແມ່ນສະມະນະດ້ວຍເຄື່ອງແບບແລະຂໍ້ວັດປະຕິບັດ

[໔໓໗] ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ບຸກຄົນຜູ້ນຸ່ງຫົ່ມຜ້າຊ້ອນມີຄວາມເປັນສະມະນະດ້ວຍອາການພຽງແຕ່ນຸ່ງຫົ່ມຜ້າຊ້ອນ

ເຮົາບໍ່ກ່າວວ່າ ບຸກຄົນຜູ້ຖືເພດເປືອຍກາຍມີຄວາມເປັນສະມະນະ ດ້ວຍອາການພຽງແຕ່ເປືອຍກາຍ

ເຮົາບໍ່ກ່າວວ່າ ບຸກຄົນຜູ້ໝັກໝົມດ້ວຍທຸລີມີຄວາມເປັນສະມະນະ ດ້ວຍອາການໝັກໝົມດ້ວຍທຸລີ

ເຮົາບໍ່ກ່າວວ່າ ບຸກຄົນຜູ້ອາບນ້ຳມີຄວາມເປັນສະມະນະ ດ້ວຍອາການພຽງແຕ່ລົງອາບນ້ຳ

ເຮົາບໍ່ກ່າວວ່າບຸກຄົນຜູ້ຢູ່ໂຄນໄມ້ເປັນຂໍ້ວັດປະຕິບັດມີຄວາມເປັນສະມະນະ ດ້ວຍອາການພຽງແຕ່ຢູ່ໂຄນໄມ້ເປັນຂໍ້ວັດປະຕິບັດ

ເຮົາບໍ່ກ່າວວ່າ ບຸກຄົນຜູ້ຢູ່ກາງແຈ້ງເປັນຂໍ້ວັດປະຕິບັດມີຄວາມເປັນສະມະນະ ດ້ວຍອາການພຽງແຕ່ຢູ່ກາງແຈ້ງເປັນຂໍ້ວັດປະຕິບັດ

ເຮົາບໍ່ກ່າວວ່າ ບຸກຄົນຜູ້ຢືນແຫງນໜ້າມີຄວາມເປັນສະມະນະ ດ້ວຍອາການພຽງແຕ່ຢືນແຫງນໜ້າ

ເຮົາບໍ່ກ່າວວ່າ ບຸກຄົນຜູ້ບໍຣິໂພກພັດຕາມວາຣະມີຄວາມເປັນສະມະນະ ດ້ວຍອາການພຽງແຕ່ບໍຣິໂພກພັດຕາມວາຣະ

ເຮົາບໍ່ກ່າວວ່າ ບຸກຄົນຜູ້ທ່ອງມົນມີຄວາມເປັນສະມະນະ ດ້ວຍອາການພຽງການທ່ອງມົນ

ເຮົາບໍ່ກ່າວວ່າ ບຸກຄົນຜູ້ຂະໝວດຜົມມີຄວາມເປັນສະມະນະ ດ້ວຍອາການພຽງແຕ່ຂະໝວດຜົມ

ຫາກບຸກຄົນນຸ່ງຫົ່ມຜ້າຊ້ອນ ມີອະພິດຊາຫຼາຍ ຈະເພິ່ງລະອະພິດຊາໄດ້ດ້ວຍອາການພຽງການນຸ່ງຫົ່ມຜ້າຊ້ອນ ມີຈິດພະຍາບາດ ຈະເພິ່ງລະພະຍາບາດໄດ້ ມີຄວາມມັກໂກດ ຈະເພິ່ງລະຄວາມມັກໂກດໄດ້ ມີຄວາມມັດໂກດ ຈະເພິ່ງລະຄວາມມັດໂກດໄດ້ ມີຄວາມລົບຫລູ່ ຈະເພິ່ງລະຄວາມລົບຫລູ່ໄດ້ ມີຄວາມຕີສະເໝີ ຈະເພິ່ງລະຄວາມຕີສະເໝີໄດ້ ມີຄວາມຣິດສະຫຍາ ຈະເພິ່ງລະຄວາມຣິດສະຫຍາໄດ້ ມີຄວາມຂີ້ຖີ່ ຈະເພິ່ງລະຄວາມຂີ້ຖີ່ໄດ້ ມີຄວາມໂອ້ອວດຈະເພິ່ງລະຄວາມໂອ້ອວດໄດ້ ມີມານຍາ ຈະເພິ່ງລະມານຍາໄດ້ ມີຄວາມປາຖະໜາທີ່ເປັນບາບ ຈະເພິ່ງລະຄວາມປາຖະໜາທີ່ເປັນບາບໄດ້ ມີຄວາມເຫັນຜິດ ຈະເພິ່ງລະຄວາມເຫັນຜິດໄດ້ ດ້ວຍອາການພຽງແຕ່ນຸ່ງຫົ່ມຜ້າຊ້ອນແລ້ວ ມິດອຳມາດ ຍາດສາໂລຫິດກໍຈະເພິ່ງໃຫ້ບຸກຄົນນັ້ນນຸ່ງຫົ່ມຜ້າຊ້ອນຕັ້ງແຕ່ເກີດຢ່າງແນ່ນອນ ເພິ່ງຊັກຊວນຜູ້ນັ້ນໃຫ້ນຸ່ງຫົ່ມຜ້າຊ້ອນຢ່າງດຽວວ່າ "ທ່ານຜູ້ມີ ໜ້າອີ່ມເອີບ ມາເທີ້ນ ທ່ານຈົ່ງນຸ່ງຫົ່ມຜ້າຊ້ອນ ທ່ານຜູ້ນຸ່ງຫົ່ມຜ້າຊ້ອນຢູ່ ມີອະພິດຊາຫຼາຍ ກໍຈັກລະອະພິດຊາໄດ້ດ້ວຍອາການພຽງນຸ່ງຫົ່ມຜ້າຊ້ອນ ມີຈິດພະຍາບາດກໍຈັກລະພະຍາບາດໄດ້ ມີຄວາມມັກໂກດກໍຈັກລະຄວາມມັກໂກດໄດ້ ມີຄວາມມັດໂກດກໍຈັກລະຄວາມມັດໂກດໄດ້ ມີຄວາມລົບຫລູ່ກໍຈັກລະຄວາມລົບຫລູ່ໄດ້ ມີຄວາມຣິດສະຫຍາກໍຈັກລະຄວາມຣິດສະຫຍາໄດ້ ມີຄວາມຂີ້ຖີ່ ກໍຈັກລະຄວາມຂີ້ຖີ່ໄດ້ ມີຄວາມໂອ້ອວດກໍຈັກລະຄວາມໂອ້ອວດໄດ້ ມີມານຍາກໍຈັກລະມານຍາໄດ້ ມີຄວາມປາຖະໜາທີ່ເປັນບາບກໍຈັກລະຄວາມປາຖະໜາທີ່ເປັນບາບໄດ້ ມີຄວາມເຫັນຜິດກໍຈັກລະຄວາມເຫັນຜິດໄດ້ ດ້ວຍອາການພຽງແຕ່ນຸ່ງຫົ່ມຜ້າຊ້ອນທໍ່ນັ້ນ

ພິກຂຸທັງຫຼາຍ ຍ້ອນເຮົາເຫັນບຸກຄົນບາງຄົນໃນໂລກນີ້ແມ່ນນຸ່ງຫົ່ມຜ້າຊ້ອນຢູ່ຍັງມີອະພິດຊາຫຼາຍ ມີຈິດພະຍາບາດ ມີຄວາມມັກໂກດ ມີຄວາມມັດໂກດ ມີຄວາມລົບຫລູ່ ມີຄວາມຕີສະ

ເໜີ ມີຄວາມຣິດສະຫຍາ ມີຄວາມຂີ້ຖີ່ ມີຄວາມໂອ້ອວດ ມີມານຍາ ມີຄວາມປາຖະໜາທີ່ເປັນບາບ ມີຄວາມເຫັນຜິດ ສັນນັ້ນ ເຮົາຈຶ່ງບໍ່ກ່າວວ່າ ບຸກຄົນທີ່ນຸ່ງຫົ່ມຜ້າຊ້ອນມີຄວາມເປັນສະມະນະດ້ວຍອາການພຽງນຸ່ງຫົ່ມຜ້າຊ້ອນ

ຫາກບຸກຄົນຖືເພດເປືອຍກາຍ ຯລຯ ຫາກບຸກຄົນໝັກໝົມດ້ວຍທຸລີ ຯລຯ ຫາກບຸກຄົນອາບນ້ຳ ຯລຯ ຫາກບຸກຄົນຢູ່ເຫງົ້າໄມ້ ຯລຯ ຫາກບຸກຄົນຢູ່ກາງແຈ້ງ ຯລຯ ຫາກບຸກຄົນຢືນແຫງນໜ້າ ຯລຯ ຫາກບຸກຄົນບໍຣິໂພກພັດຕາມວາຣະ ຯລຯ ຫາກບຸກຄົນທ່ອງມົນ ຯລຯ ຫາກບຸກຄົນຂະໝວດຜົມ ມີອະພິດຊາຫຼາຍ ຈະເພິ່ງລະອະພິດຊາໄດ້ດ້ວຍອາການພຽງແຕ່ຂະຫມວດຜົມ ມີຈິດພະຍາບາດ ຈະເພິ່ງລະພະຍາບາດໄດ້ ມີຄວາມມັກໂກດ ຈະເພິ່ງລະຄວາມມັກໂກດໄດ້ ມີຄວາມມັດໂກດ ຈະເພິ່ງລະຄວາມມັດໂກດໄດ້ ມີຄວາມລົບຫລູ່ ຈະເພິ່ງລະຄວາມລົບຫລູ່ໄດ້ ມີຄວາມຕີສະເໜີ ຈະເພິ່ງລະຄວາມຕີສະເໜີໄດ້ ມີຄວາມຣິດສະຫຍາ ຈະເພິ່ງລະຄວາມຣິດສະຫຍາໄດ້ ມີຄວາມ ຂີ້ຖີ່ ຈະເພິ່ງລະຄວາມຂີ້ຖີ່ໄດ້ ມີຄວາມໂອ້ອວດ ຈະເພິ່ງລະຄວາມໂອ້ອວດໄດ້ ມີມານຍາ ຈະເພິ່ງລະມານຍາໄດ້ ມີຄວາມປາຖະໜາທີ່ເປັນບາບ ຈະເພິ່ງລະຄວາມປາຖະໜາທີ່ເປັນບາບໄດ້ ມີຄວາມເຫັນຜິດ ຈະເພິ່ງລະຄວາມເຫັນຜິດໄດ້ດ້ວຍອາການພຽງການຂະໝວດຜົມແລ້ວ ມິດອຳມາດ ຍາດສາໂລຫິດກໍຈະເພິ່ງໃຫ້ບຸກຄົນນັ້ນຂະໝວດຜົມຕັ້ງແຕ່ເກີດຢ່າງແນ່ນອນ ເພິ່ງຊັກຊວນຜູ້ນັ້ນໃຫ້ຂະໝວດຜົມຢ່າງດຽວວ່າ “ທ່ານຜູ້ມີໜ້າອີ່ມເອີບ ມາເທີ້ນ ທ່ານຈົ່ງເປັນຜູ້ຂະໝວດຜົມ ທ່ານຜູ້ຂະໝວດຜົມຢູ່ ມີອະພິດຊາຫຼາຍກໍຈັກລະອະພິດຊາໄດ້ດ້ວຍອາການພຽງການຂະໝວດຜົມ ມີຈິດ ພະຍາບາດກໍຈັກລະພະຍາບາດໄດ້ ມີຄວາມມັກໂກດກໍຈັກລະຄວາມມັກໂກດໄດ້ ມີຄວາມມັດໂກດກໍຈັກລະຄວາມມັດໂກດໄດ້ ມີຄວາມລົບຫລູ່ກໍຈັກລະຄວາມລົບຫລູ່ໄດ້ ມີຄວາມຕີສະເໜີກໍຈັກລະຄວາມຕີສະເໜີໄດ້ ມີຄວາມຣິດສະຫຍາກໍຈັກລະຄວາມຣິດສະຫຍາໄດ້ ມີຄວາມຂີ້ຖີ່ກໍຈັກລະຄວາມຂີ້ຖີ່ໄດ້ ມີຄວາມໂອ້ອວດກໍຈັກລະຄວາມໂອ້ອວດໄດ້ ມີມານຍາກໍຈັກລະມານຍາໄດ້ ມີຄວາມປາຖະໜາທີ່ເປັນບາບກໍຈັກລະຄວາມປາຖະໜາທີ່ເປັນບາບໄດ້ ມີຄວາມເຫັນຜິດກໍຈັກລະຄວາມເຫັນຜິດໄດ້ ດ້ວຍອາການພຽງການຂະໝວດຜົມ”

ພິກຂຸທັງຫຼາຍ ຍ້ອນເຮົາເຫັນບຸກຄົນບາງຄົນໃນໂລກນີ້ແມ່ນເກົ້າຜົມຢູ່ ກໍຍັງມີອະພິດຊາຫຼາຍ ມີຈິດພະຍາບາດ ມີຄວາມມັກໂກດ ມີຄວາມມັດໂກດ ມີຄວາມລົບຫລູ່ ມີຄວາມຕີສະເໜີ ມີຄວາມຣິດສະຫຍາ ມີຄວາມຂີ້ຖີ່ ມີຄວາມໂອ້ອວດ ມີມານຍາ ມີຄວາມປາຖະໜາທີ່ເປັນບາບ ມີຄວາມເຫັນຜິດ ສັນນັ້ນ ເຮົາຈຶ່ງບໍ່ກ່າວວ່າ ບຸກຄົນຜູ້ເກົ້າຜົມມີຄວາມເປັນສະມະນະດ້ວຍອາການພຽງເກົ້າຜົມ

## ຂໍ້ປະຕິບັດທີ່ສົມຄວນແກ່ສະມະນະ

[໔໓໗] ພິກຂຸຊື່ວ່າ ເປັນຜູ້ປະຕິບັດຕາມຂໍ້ປະຕິບັດທີ່ສົມຄວນແກ່ສະມະນະ ເປັນແນວໃດ?

ຄື ພິກຂຸອົງໃດອົງໜຶ່ງມີອະພິດຊາຫຼາຍກໍລະອະພິດຊາໄດ້ ມີຈິດພະຍາບາດກໍລະພະຍາບາດໄດ້ ມີຄວາມມັກໂກດກໍລະຄວາມມັກໂກດໄດ້ ມີຄວາມມັດໂກດກໍລະຄວາມມັດໂກດໄດ້ ມີຄວາມລົບຫລູ່ກໍລະຄວາມລົບຫລູ່ໄດ້ ມີຄວາມຕີສະເໝີກໍລະຄວາມຕີສະເໝີໄດ້ ມີຄວາມຮິດສະຫຍາກໍລະຄວາມຮິດສະຫຍາໄດ້ ມີຄວາມຂີ້ຖີ່ກໍລະຄວາມຂີ້ຖີ່ໄດ້ ມີຄວາມໂອ້ອວດກໍລະຄວາມໂອ້ອວດໄດ້ ມີມານຍາກໍລະມານຍາໄດ້ ມີຄວາມປາຖະໜາທີ່ເປັນບາບກໍລະຄວາມປາຖະໜາທີ່ເປັນບາບໄດ້ ມີຄວາມເຫັນຜິດກໍລະຄວາມເຫັນຜິດໄດ້ ຍ້ອນລະກິເລດທີ່ເປັນມົນທິນ ເປັນໂທດ ເປັນເໝືອນ ນ້ຳຝາດຂອງສະມະນະ ເປັນເຫດໃຫ້ເກີດໃນອະບາຍ ແລະ ມີວິບາກທີ່ຕົນຈະເພິ່ງສະເຫວີຍໃນທຸຄະຕິ ເຫຼົ່ານີ້ໄດ້ ເຮົາຈຶ່ງກ່າວວ່າ “ພິກຂຸນັ້ນ ເປັນຜູ້ປະຕິບັດຕາມຂໍ້ປະຕິບັດທີ່ສົມຄວນແກ່ສະມະນະ”

ພິກຂຸນັ້ນ ຍ່ອມພິຈາລະນາເຫັນຕົນບໍລິສຸດ ລຸດພົ້ນແລ້ວຈາກບາບອະກຸສົນທຳທັງປວງນີ້ ເມື່ອທ່ານພິຈາລະນາເຫັນຕົນບໍລິສຸດ ລຸດພົ້ນແລ້ວຈາກບາບອະກຸສົນທຳທັງປວງນີ້ ຄວາມປາໂມດຈຶ່ງເກີດ ເມື່ອມີຄວາມປາໂມດປີຕິຈຶ່ງເກີດ ເມື່ອໃຈມີປີຕິກາຍຈຶ່ງສະງົບ ເມື່ອມີກາຍສະງົບທ່ານຈຶ່ງສະເຫວີຍສຸກ ເມື່ອທ່ານມີສຸກຈິດຈຶ່ງຕັ້ງໝັ້ນ

ທ່ານມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ພິກຂຸທັງຫຼາຍ ສະໂບກຂະຣະນີ ມີນ້ຳໃສບໍລິສຸດ ເຢັນສະອາດ ມີທ່າດີ ໜ້າອອນຊອນ ຖ້າບຸຣຸດມາຈາກທິດຕະເວັນອອກ ຖືກຄວາມຮ້ອນແຜດເຜົາ ຮ້ອນ ລຳບາກ ຢາກ ຍາກດື່ມນ້ຳ ເຂົ້າມາເຖິງສະໂບກຂະຣະນີນັ້ນແລ້ວກໍບັນເທົາຄວາມຍາກດື່ມນ້ຳ ແລະ ຄວາມກະວົນກະວາຍຍ້ອນຄວາມຮ້ອນໄດ້ ຖ້າບຸຣຸດມາຈາກທິດຕະເວັນຕົກ ຯລຯ ຖ້າບຸຣຸດມາຈາກທິດເໜືອ ຯລຯ ຖ້າບຸຣຸດມາຈາກທິດໃຕ້ ຯລຯ ຖ້າບຸຣຸດຈະມາຈາກຢູ່ໃສ ໆ ກໍຕາມຖືກຄວາມຮ້ອນ ແຜດເຜົາ ຮ້ອນ ລຳບາກ ຢາກ ຍາກດື່ມນ້ຳ ເຂົ້າມາເຖິງສະໂບກຂະຣະນີນັ້ນແລ້ວ ກໍບັນເທົາຄວາມຍາກດື່ມນ້ຳ ແລະ ຄວາມກະວົນກະວາຍຍ້ອນຄວາມຮ້ອນໄດ້ ແມ່ນສັນໃດ

ຖ້າກຸນລະບຸດອອກຈາກຕະກູນກະສັດມາບວດເປັນບັນພະຊິດ ທ່ານມາເຖິງທຳວິໄນທີ່ຕະຖາຄົດປະກາດແລ້ວຈະເລີນເມດຕາ ກະລຸນາ ມຸທິຕາ ແລະອຸເປກຂາແນວນັ້ນ ຍ່ອມໄດ້ຄວາມ

ສະງົບລະງັບໃນພາຍໃນ ເຮົາກ່າວວ່າ "ເປັນຜູ້ປະຕິບັດຕາມຂໍ້ປະຕິບັດທີ່ສົມຄວນແກ່ ສະມະນະ" ຍ້ອນຄວາມສະງົບລະງັບໃນພາຍໃນນັ້ນ

ຖ້າກຸນລະບຸດອອກຈາກຕະກູນ ພາມ ຯລຯ

ຖ້າກຸນລະບຸດອອກຈາກຕະກູນ ແພດ ຯລຯ

ຖ້າກຸນລະບຸດອອກຈາກຕະກູນ ສູດ ຯລຯ

ຖ້າກຸນລະບຸດອອກຈາກຕະກູນໃດ ໆ ກໍຕາມມາບວດເປັນບັນພະຊິດ ທ່ານມາເຖິງທຳວິໄນທີ່ຕະຖາຄົດປະກາດແລ້ວ ຈະເລີນເມດຕາ ກະລຸນາ ມຸທິຕາແລະອຸເປກຂາຢ່າງນັ້ນ ໄດ້ຄວາມສະງົບລະງັບໃນພາຍໃນ ເຮົາກ່າວວ່າ "ເປັນຜູ້ປະຕິບັດຕາມຂໍ້ປະຕິບັດທີ່ສົມຄວນແກ່ສະມະນະ" ຍ້ອນຄວາມສະງົບລະງັບໃນພາຍໃນນັ້ນ

ຖ້າກຸນລະບຸດອອກຈາກຕະກູນກະສັດມາບວດເປັນບັນພະຊິດ ທ່ານເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ກຸນລະບຸດນີ້ຊື່ວ່າສະມະນະ ຍ້ອນອາສະວະທັງຫຼາຍສິ້ນໄປ"

ຖ້າກຸນລະບຸດອອກຈາກຕະກູນ ພາມ ຯລຯ

ຖ້າກຸນລະບຸດອອກຈາກຕະກູນ ແພດ ຯລຯ

ຖ້າກຸນລະບຸດອອກຈາກຕະກູນ ສູດ ຯລຯ

ຖ້າກຸນລະບຸດອອກຈາກຕະກູນໃດ ໆ ກໍຕາມ ມາບວດເປັນບັນພະຊິດ ທ່ານເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ກຸນລະບຸດນີ້ຊື່ວ່າ ສະມະນະ ຍ້ອນອາສະວະທັງຫຼາຍສິ້ນໄປ ຄືກັນສັນນັ້ນແລ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະອັດສະປຸຣະສູດທີ ໑໐ ຈົບ**

**ມະຫາຍະມະກະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ຈູລະໂຄສິງຄະສູດ | ໒. ມະຫາໂຄສິງຄະສູດ |
| ໓. ມະຫາໂຄປາລະສູດ | ໔. ຈູລະໂຄປາລະສູດ |
| ໕. ຈູລະສັດຈະກະສູດ | ໖. ມະຫາສັດຈະກະສູດ |
| ໗. ຈູລະຕັນຫາສັງຂະຍະສູດ | ໘. ມະຫາຕັນຫາສັງຂະຍະສູດ |
| ໙. ມະຫາອັດສະປຸຣະສູດ | ໑໐. ຈູລະອັດສະປຸຣະສູດ |

# ໕. ຈູລະຍະມະກະວັກ

## ໝວດວ່າດ້ວຍທຳເປັນຄູ່ ໝວດນ້ອຍ

## ໑. ສາເລີຍຍະກະສູດ

### ວ່າດ້ວຍເຫດການໃນໝູ່ບານພາມຊື່ສາລາ

### ເຫດປັດໄຈນຳໄປສຸຄະຕິແລະທຸຄະຕິ

[໔໓໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນກັບພິກຂຸໝູ່ໃຫຍ່ ເຖິງບ້ານພາມຊື່ ສາລາຂອງຊາວໂກສົນ ພາມແລະຄະຫະບໍດີ ຊາວບ້ານສາລາໄດ້ຟັງຂ່າວ ວ່າ

"ທ່ານພຣະສະມະນະໂຄດົມ ເປັນສາກະຍະບຸດ ສະເດັດອອກຜະນວດຈາກສາກະຍະຕະກູນ ສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງໝູ່ບ້ານພາມຊື່ສາລາໂດຍລຳດັບແລ້ວ ທ່ານພຣະໂຄດົມພຣະອົງນັ້ນ ມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ແມ່ນຍ້ອນ ເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ພຣະອົງຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແນວນີ້ ເປັນຄວາມດີຢ່າງແທ້ຈິງ"

ຄັ້ງນັ້ນ ພາມແລະຄະຫະບໍດີຊາວບ້ານສາລາ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ລາງພວກຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນທີ່ສົມຄວນ ລາງພວກໄດ້ທູນສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງໃນທີ່ສົມຄວນ ລາງພວກປະນົມມືຕໍ່ພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງໃນທີ່ສົມຄວນ ລາງພວກປະກາດຊື່ແລະໂຄດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງໃນທີ່ສົມຄວນ ລາງພວກກໍນັ່ງມິດຢູ່ໃນທີ່ສົມຄວນ ແລ້ວໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍເປັນເຫດ ເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ

ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍເປັນເຫດ ເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນສຸຄະຕິໂລກສະຫວັນ"

ພຣະຜູ້ມີພຣະພາກເຈົ້າ ຕັດຕອບວ່າ "ພາມແລະຄະຫະບໍດີທັງຫຼາຍ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ຍ້ອນຄວາມປະພຶດບໍ່ສະໝໍ່າສະເໝີຄືຄວາມປະພຶດອະທໍາເປັນເຫດ

ພາມແລະຄະຫະບໍດີທັງຫຼາຍ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນຄວາມປະພຶດສະໝໍ່າສະເໝີຄືຄວາມປະພຶດທໍາເປັນເຫດ"

ພາມແລະຄະຫະບໍດີເຫຼົ່ານັ້ນຂາບທູນວ່າ "ເນື້ອຄວາມແຫ່ງທໍາທີ່ທ່ານພຣະໂຄດົມ ຕັດໄວ້ໂດຍຫຍໍ້ບໍ່ຊົງຊີ້ແຈ່ງໃຫ້ພິດສະດານ ຂ້າພຣະອົງທັງຫຼາຍບໍ່ຮູ້ໂດຍພິດສະດານໄດ້ ຂໍທ່ານພຣະໂຄດົມໂຜດສະແດງເນື້ອຄວາມແຫ່ງທໍາທີ່ພຣະອົງຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໃຫ້ພິດສະດານນີ້ແກ່ພວກຂ້າພຣະອົງທັງຫຼາຍ ໂດຍວິທີທີ່ຂ້າພຣະອົງທັງຫຼາຍຈະເພິ່ງຮູ້ໂດຍພິດສະດານໄດ້ດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ແລະຄະຫະບໍດີທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ເມື່ອພວກພາມ ແລະ ຄະຫະບໍດີຊາວບ້ານສາລາ ທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

## ອະກຸສົນກໍາມະບົດ ໑໐

[໔໔໐] "ພາມແລະຄະຫະບໍດີທັງຫຼາຍ ຄວາມປະພຶດບໍ່ສະໝໍ່າສະເໝີ ຄື ຄວາມປະພຶດອະທໍາທາງກາຍມີ ໓ ປະການ ຄວາມປະພຶດບໍ່ສະໝໍ່າສະເໝີ ຄື ຄວາມປະພຶດອະທໍາທາງວາຈາມີ ໔ ປະການ ຄວາມປະພຶດບໍ່ສະໝໍ່າສະເໝີ ຄື ຄວາມປະພຶດອະທໍາທາງໃຈມີ ໓ ປະການ

ຄວາມປະພຶດບໍ່ສະໝໍ່າສະເໝີ ຄື ຄວາມປະພຶດອະທໍາທາງກາຍມີ ໓ ປະການ ອັນໃດແນ ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ຂ້າສັດ ຄື ເປັນຄົນຫຍາບຊ້າ ມີມືເປື້ອນເລືອດ ປັກໃຈຢູ່ໃນການຂ້າ ແລະການທຸບຕີ ບໍ່ມີຄວາມລະອາຍ ບໍ່ມີຄວາມອີດູໃນສັດທັງປວງ

໔. ເປັນຜູ້ລັກຊັບ ຄື ເປັນຜູ້ຖືເອົາຊັບອັນເປັນອຸປະກອນເຄື່ອງພໍໃຈ ຂອງຜູ້ອື່ນ ເຊິ່ງຢູ່ໃນເຮືອນຫຼືໃນປ່າທີ່ເຈົ້າຂອງບໍ່ໄດ້ໃຫ້ ດ້ວຍຈິດເປັນເຫດຂອງການລັກ

໓. ເປັນຜູ້ປະພຶດຜິດໃນກາມ ຄື ເປັນຜູ້ປະພຶດລ່ວງໃນສະຕີທີ່ຢູ່ໃນປົກຄອງຂອງມານດາ ທີ່ຢູ່ໃນປົກຄອງຂອງບິດາ ທີ່ຢູ່ໃນປົກຄອງຂອງມານດາບິດາ ທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ທີ່ຢູ່ໃນປົກຄອງຂອງເອື້ອຍສາວນ້ອງສາວ ທີ່ຢູ່ໃນປົກຄອງຂອງຍາດ ທີ່ຢູ່ໃນປົກຄອງຂອງໂຄດ ທີ່ປະພຶດທຳ ມີສາມີ ມີກົດໝາຍຄຸ້ມຄອງ ໂດຍທີ່ສຸດ ແມ່ນສະຕີທີ່ບຸຣຸດໃຊ້ພວງມາໄລໝາຍໄວ້

ຄວາມປະພຶດບໍ່ສະໝ່ຳສະເໝີ ຄື ຄວາມປະພຶດອະທຳທາງກາຍມີ ໓ ປະການແນວນີ້ແລ

ຄວາມປະພຶດບໍ່ສະໝ່ຳສະເໝີ ຄື ຄວາມປະພຶດອະທຳທາງວາຈາມີ ໔ ປະການອັນໃດແນ? ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ເວົ້າຕົວະ ຄື ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ "ທ່ານຮູ້ສິ່ງໃດ ຈົ່ງກ່າວສິ່ງນັ້ນ" ບຸຣຸດນັ້ນ ບໍ່ຮູ້ກໍກ່າວ ວ່າ "ຮູ້" ຫຼື ຮູ້ກໍກ່າວວ່າ "ບໍ່ຮູ້" ບໍ່ເຫັນກໍກ່າວວ່າ "ເຫັນ" ຫຼືເຫັນ ກໍກ່າວວ່າ "ບໍ່ເຫັນ" ກ່າວຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກນ້ອຍແດ່

໔. ເປັນຜູ້ເວົ້າສັບສໍ່ ຄື ຟັງຄວາມຝ່າຍນີ້ແລ້ວໄປບອກຝ່າຍນັ້ນ ເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນແລ້ວມາບອກຝ່າຍນີ້ ເພື່ອທຳລາຍຝ່າຍນັ້ນຍຸຍົງຄົນທີ່ສາມັກຄີກັນ ສົ່ງເສີມຄົນທີ່ແຕກແຍກກັນ ຊົມຊື່ນ ຍິນດີ ເພີດເພີນຕໍ່ຜູ້ທີ່ແຕກແຍກກັນ ເວົ້າແຕ່ຄຳເວົ້າທີ່ກໍ່ຄວາມແຕກແຍກກັນ

໓. ເປັນຜູ້ເວົ້າຄຳຫຍາບ ຄື ເວົ້າແຕ່ຄຳຫຍາບຄາຍ ກ້າແຂງ ເຜັດຮ້ອນ ຫຍາບຄາຍ ສຽບແທງ ແກ່ຜູ້ອື່ນ ກະທົບຜູ້ອື່ນ ໃກ້ຕໍ່ຄວາມໂກດ ບໍ່ເປັນໄປເພື່ອສະມາທິ

໔. ເປັນຜູ້ເວົ້າບໍ່ມີສາຣະ ຄື ເວົ້າບໍ່ຖືກເວລາ ເວົ້າຄຳທີ່ບໍ່ຈິງ ເວົ້າຄຳທີ່ບໍ່ອີງປະໂຫຍດ ເວົ້າບໍ່ອີງທຳ ເວົ້າບໍ່ອີງວິໄນ ເວົ້າຄຳທີ່ບໍ່ມີຫຼັກຖານ ບໍ່ມີທີ່ອ້າງອີງບໍ່ມີທີ່ກຳນົດ ບໍ່ປະກອບດ້ວຍປະໂຫຍດ ໂດຍບໍ່ເໝາະແກ່ເວລາ

ຄວາມປະພຶດບໍ່ສະໝ່ຳສະເໝີ ຄື ຄວາມປະພຶດອະທຳທາງວາຈາມີ ໔ ປະການຢ່າງນີ້ແລ

ຄວາມປະພຶດບໍ່ສະໝໍ່າສະເໝີ ຄື ຄວາມປະພຶດອະທຳທາງໃຈມີ ໓ ປະການ ອັນໃດແນ ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ເພ່ງເລັງຍາກໄດ້ຂອງເຂົາ ຄື ເພ່ງເລັງຍາກໄດ້ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນ ວ່າ "ເຮັດຢ່າງໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນ ຈະເພິ່ງເປັນຂອງເຮົາໄດ້"

໒. ເປັນຜູ້ມີຈິດພະຍາບາດ ຄື ມີຈິດຄິດຮ້າຍ ວ່າ "ຂໍສັດເຫຼົ່ານີ້ຈົ່ງຖືກຂ້າ ຈົ່ງຖືກທຳລາຍ ຈົ່ງຂາດສູນ ຈົ່ງພິນາດໄປ ຫຼື ຢ່າໄດ້ມີອີກເລີຍ"

໓. ເປັນມິດສາທິດຖິ ຄື ມີຄວາມເຫັນວິປະຣິດວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການບວງສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີ ປະ ຕິບັດຊອບເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງ ກໍບໍ່ມີໃນໂລກ"

ຄວາມປະພຶດບໍ່ສະໝໍ່າສະເໝີ ຄື ຄວາມປະພຶດອະທຳທາງໃຈມີ ໓ ປະການ ແນວນີ້ແລ

ພາມ ແລະ ຄະຫະບໍດີທັງຫຼາຍ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ຍ້ອນຄວາມປະພຶດບໍ່ສະໝໍ່າສະເໝີ ຄື ຄວາມປະພຶດອະທຳເປັນເຫດ ແນວນີ້ແລ

## ກຸສົນກຳມະບົດ ໑໐

[໔໔໑] ພາມ ແລະຄະຫະບໍດີທັງຫຼາຍ ຄວາມປະພຶດສະໝໍ່າສະເໝີ ຄື ຄວາມປະພຶດທຳທາງກາຍມີ ໓ ປະການ ຄວາມປະພຶດສະໝໍ່າສະເໝີ ຄື ຄວາມປະພຶດທຳທາງວາຈາມີ ໔ ປະການ ຄວາມປະພຶດສະໝໍ່າສະເໝີ ຄື ຄວາມປະພຶດທຳທາງໃຈມີ ໓ ປະການ

ຄວາມປະພຶດສະໝໍ່າສະເໝີ ຄື ຄວາມປະພຶດທຳທາງກາຍມີ ໓ ປະການ ມີອັນໃດແນ

ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ຄື ວາງທັນດາວຸດ ແລະ ສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງປະໂຍດເກື້ອກູນຕໍ່ສັບພະສັດຢູ່

໒. ເປັນຜູ້ລະເວັ້ນຂາດຈາກການລັກຊັບ ຄື ບໍ່ຖືເອົາຊັບອັນເປັນອຸປະກອນເຄື່ອງ

ພໍໃຈຂອງຜູ້ອື່ນ ເຊິ່ງຢູ່ໃນເຮືອນ ຫຼື ໃນປ່າ ທີ່ເຈົ້າຂອງບໍ່ໄດ້ໃຫ້ດ້ວຍຈິດເປັນເຫດລັກ

໓. ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຄື ບໍ່ເປັນຜູ້ປະພຶດລ່ວງໃນສະຕີທີ່ຢູ່ໃນປົກຄອງຂອງມານດາ ທີ່ຢູ່ໃນປົກຄອງຂອງບິດາ ທີ່ຢູ່ໃນປົກຄອງຂອງມານດາບິດາ ທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ທີ່ຢູ່ໃນປົກຄອງຂອງເອື້ອຍສາວນ້ອງສາວ ທີ່ຢູ່ໃນປົກຄອງຂອງຍາດ ທີ່ປະພຶດທຳ ມີສາມີ ມີກົດໝາຍຄຸ້ມຄອງ ໂດຍທີ່ສຸດ ແມ່ນສະຕີທີ່ບຸຣຸດໃຊ້ພວງມາລັຍໝາຍໄວ້

ຄວາມປະພຶດສະໝ່ຳສະເໝີ ຄື ຄວາມປະພຶດທຳທາງກາຍມີ ໓ ປະການ ຢ່າງນີ້ແລ

ຄວາມປະພຶດສະໝ່ຳສະເໝີ ຄື ຄວາມປະພຶດທຳທາງວາຈາມີ ໔ ປະການ ອັນໃດແນ

ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຄື ບໍ່ວ່າຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ “ທ່ານຮູ້ສິ່ງໃດ ຈົ່ງກ່າວ ສິ່ງນັ້ນ” ບຸຣຸດນັ້ນບໍ່ຮູ້ກໍກ່າວ ວ່າ “ບໍ່ຮູ້” ຫຼື ຮູ້ກໍກ່າວວ່າ “ຮູ້” ບໍ່ເຫັນກໍກ່າວວ່າ “ບໍ່ເຫັນ” ຫຼື ເຫັນກໍກ່າວວ່າ “ເຫັນ” ບໍ່ກ່າວຕົວະທັງທີ່ຮູ້ ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່

໒. ເປັນຜູ້ລະເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນ ແລ້ວບໍ່ມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ສະມານຄົນທີ່ແຕກແຍກກັນ ສົ່ງເສີມຄົນທີ່ປອງດອງກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໓. ເປັນຜູ້ລະເວັ້ນຂາດຈາກການເວົ້າຄຳຫຍາບ ຄື ເວົ້າແຕ່ຄຳບໍ່ມີໂທດ ມ່ວນຫູໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງສ່ວນຫຼາຍຮັກແພງ ພໍໃຈ

໔. ເປັນຜູ້ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າແຕ່ຄຳຈິງເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີທີ່ອ້າງອີງມີທີ່ກຳນົດ ປະກອບດ້ວຍປະໂຫຍດ ເໝາະແກ່ເວລາ

ຄວາມປະພຶດສະໝ່ຳສະເໝີ ຄື ຄວາມປະພຶດທຳທາງວາຈາມີ ໔ ປະການ ຢ່າງນີ້ແລ

ຄວາມປະພຶດສະໝ່ຳສະເໝີ ຄື ຄວາມປະພຶດທຳທາງໃຈມີ ໓ ປະການ ມີອັນໃດແນ ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ຄື ບໍ່ເພ່ງເລັງຢາກໄດ້ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນວ່າ "ເຮັດຢ່າງໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາໄດ້"

໒. ເປັນຜູ້ມີຈິດບໍ່ພະຍາບາດ ຄື ບໍ່ມີຈິດຄິດຮ້າຍວ່າ "ຂໍສັດເຫຼົ່ານີ້ ຈົ່ງເປັນຜູ້ບໍ່ມີເວນ ບໍ່ມີຄວາມພະຍາບາດ ບໍ່ມີທຸກ ມີສຸກ ຖືຮັກສາຕົນຢູ່ເທີ້ນ"

໓. ເປັນສຳມາທິດຖິ ຄື ມີຄວາມເຫັນບໍ່ວິປະຣາດວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການບວງສວງມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ໂອປະປາຕິກະສັດມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ"

ຄວາມປະພຶດສະໝ່ຳສະເໝີ ຄືຄວາມປະພຶດທຳທາງໃຈມີຢູ່ ໓ ປະການ ແນວນີ້ແລ

ພາມ ແລະຄະຫະບໍດີທັງຫຼາຍ ສັດທັງຫຼາຍລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນຄວາມປະພຶດສະໝ່ຳສະເໝີ ຄື ຄວາມປະພຶດທຳເປັນເຫດແນວນີ້

## ຜົນແຫ່ງຄວາມປະພຶດສະໝ່ຳສະເໝີ

[໔໔໔] ພາມ ແລະຄະຫະບໍດີທັງຫຼາຍ ຖ້າບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄືຜູ້ປະພຶດທຳຈະເພິ່ງຫວັງວ່າ "ເຮັດຢ່າງໃດນໍ? ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນພວກຂັດຕິຍະມະຫາສານ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນ ຈະເພິ່ງເກີດໃນພວກຂັດຕິຍມະຫາສານ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ເປັນຜູ້ປະພຶດສະໝ່ຳສະເໝີ ຄື ເປັນຜູ້ປະພຶດທຳ ແນວນັ້ນແລ

ຖ້າບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳຈະເພິ່ງຫວັງວ່າ "ເຮັດແນວໃດ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນພວກພຣາມມະນະມະຫາສານ ຯລຯ ເຮົາເພິ່ງເກີດໃນພວກຄະຫະບໍດີມະຫາສານ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນ ຈະເພິ່ງເກີດໃນພວກຄະຫະບໍດີມະຫາສານ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ເປັນຜູ້ປະພຶດສະໝ່ຳສະເໝີຄືເປັນຜູ້ປະພຶດທຳແນວນັ້ນແລ

ຖ້າບຸກຄົນຜູ້ປະພຶດສະໝໍ່າສະເໝີ ຄື ຜູ້ປະພຶດທໍາຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນເທບຊັ້ນຈາຕຸມະຫາຣາດ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນ ຈະເພິ່ງເກີດໃນເທບຊັ້ນຈາຕຸມະຫາຣາດ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນເປັນຜູ້ປະພຶດສະໝໍ່າສະເໝີ ຄື ເປັນຜູ້ປະພຶດທໍາ ແນວນັ້ນແລ

ຖ້າບຸກຄົນຜູ້ປະພຶດສະໝໍ່າສະເໝີ ຄື ຜູ້ປະພຶດທໍາຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນເທບຊັ້ນຕາວະຕິງສາ ຯລຯ ເທບຊັ້ນຍາມາ ຯລຯ ເທບຊັ້ນດຸສິດ ຯລຯ ເທບຊັ້ນນິມມານະຣະດີ ຯລຯ ເທບຊັ້ນປະຣະນິມມິດະວະສະວັດດີ ຯລຯ ເທບຜູ້ນັບເນື່ອງໃນໝູ່ພົມ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນ ຈະເພິ່ງເກີດໃນເທບຜູ້ນັບເນື່ອງໃນໝູ່ພົມ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນເປັນຜູ້ປະພຶດສະໝໍ່າສະເໝີ ຄື ເປັນຜູ້ປະພຶດທໍາ ແນວນັ້ນແລ

ຖ້າບຸກຄົນຜູ້ປະພຶດສະໝໍ່າສະເໝີ ຄື ຜູ້ປະພຶດທໍາຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນເທບຊັ້ນອາພາ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນຈະເພິ່ງເກີດໃນເທບຊັ້ນອາພາ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນເປັນຜູ້ປະພຶດສະໝໍ່າສະເໝີ ຄື ເປັນຜູ້ປະພຶດທໍາ ແນວນັ້ນແລ

ຖ້າບຸກຄົນຜູ້ປະພຶດສະໝໍ່າສະເໝີ ຄື ຜູ້ປະພຶດທໍາຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນເທບຊັ້ນປະຣິດຕາພາ ຯລຯ ເທບຊັ້ນອັບປະມານາພາ ຯລຯ ເທບຊັ້ນອາພັດສະຣາ ຯລຯ ເທບຊັ້ນປະຣິດຕະສຸພາ ຯລຯ ເທບຊັ້ນອັບປະມານະສຸພາ ຯລຯ ເທບຊັ້ນສຸພະກິນຫາ ຯລຯ ເທບຊັ້ນເວຫັບຜະລາ ຯລຯ ເທບຊັ້ນອະວິຫາ ຯລຯ ເທບຊັ້ນອະຕັບປາ ຯລຯ ເທບຊັ້ນສຸທັດສາ ຯລຯ ເທບຊັ້ນສຸທັດສີ ຯລຯ ເທບຊັ້ນອະກະນິດຖະພົບ ຯລຯ ເທບຜູ້ເຂົ້າເຖິງອາກາສານັນຈາຍະຕະນະພົບ ຯລຯ ເທບຜູ້ເຂົ້າເຖິງວິນຍານັນຈາຍະຕະນະພົບ ຯລຯ ເທບຜູ້ເຂົ້າເຖິງອາກິນຈັນຍາຍະຕະນະພົບ ຯລຯ ເທບຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພົບ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນ ຈະເພິ່ງເກີດໃນເທບຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພົບ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ເປັນຜູ້ປະພຶດສະໝໍ່າສະເໝີ ຄືເປັນຜູ້ປະພຶດທໍາ ແນວນັ້ນແລ

ພາມ ແລະຄະຫະບໍດີທັງຫຼາຍ ຖ້າບຸກຄົນຜູ້ປະພຶດສະໝໍ່າສະເໝີ ຄື ຜູ້ປະພຶດທໍາຈະເພິ່ງຫວັງວ່າ "ເຮັດແນວໃດນໍ ເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ" ເປັນໄປໄດ້ທີ່ບຸກຄົນນັ້ນຈະເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະ ສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ເປັນຜູ້ປະພຶດສະໝໍ່າ

ສະເໜີ ຄື ເປັນຜູ້ປະພຶດທຳ ແນວນັ້ນແລ"

## ຊາວບ້ານສາລາເຖິງພຣະຣັດຕະນະໄຕຣເປັນສະຣະນະ

[໔໔໓] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພວກພາມ ແລະຄະຫະບໍດີຊາວບ້ານສາລາໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ທ່ານພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະມ່ວນຫຼາຍ ທ່ານພຣະໂຄດົມ ປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບເໝືອນບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຄົນຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງທັງຫຼາຍນີ້ ຂໍເຖິງທ່ານພຣະໂຄດົມ ພ້ອມທັງ ພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພຣະອົງທັງຫຼາຍວ່າ ເປັນອຸປາສົກຜູ້ເຖິງສະຣະນະ ນັບຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດດ້ວຍເທີ້ນ" ດັ່ງນີ້ແລ

**ສາເລີຍຍະກະສູດທີ ໑ ຈົບ**

# ໘. ເວຣັນຊະກະສູດ

## ວ່າດ້ວຍຊາວເມືອງເວຣັນຊາ

## ເຫດປັດໄຈນຳໄປສຸຄະຕິແລະທຸຄະຕິ

[໔໔໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພວກພາມ ແລະ ຄະຫະບໍດີຊາວເມືອງເວຣັນຊາພັກຢູ່ໃນນະຄອນສາວັດຖີ ດ້ວຍວຽກງານບາງຢ່າງ ໄດ້ຟັງຂ່າວມາ ວ່າ

"ທ່ານພຣະສະມະນະໂຄດົມ ເປັນສາກະຍະບຸດ ສະເດັດອອກບວດແລ້ວຈາກສາກະຍະຕະກູນ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ທ່ານພຣະໂຄດົມພຣະອົງນັ້ນ ມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບ

ພ້ອມ ດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ ດ້ວຍພຣະອົງເອງແລ້ວຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນແນວນີ້ເປັນຄວາມດີຢ່າງແທ້ຈິງ"

ຄັ້ງນັ້ນ ພວກພາມແລະຄະຫະບໍດີຊາວເມືອງເວຣັນຊາ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ລາງພວກຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກ ໄດ້ທູນສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະນົມມືຕໍ່ພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະກາດຊື່ແລະໂຄດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກກໍມິດນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍເປັນເຫດ ເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ?"

ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍເປັນເຫດ ເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນສຸຄະຕິໂລກສະຫວັນ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ແລະຄະຫະບໍດີທັງຫຼາຍ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຍ້ອນຄວາມປະພຶດບໍ່ສະໝ່ຳສະເໝີ ຄື ຄວາມປະພຶດອະທຳເປັນເຫດ

ພາມ ແລະຄະຫະບໍດີທັງຫຼາຍ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນຄວາມປະພຶດສະໝ່ຳສະເໝີ ຄື ຄວາມປະພຶດທຳເປັນເຫດ"

ພາມ ແລະຄະຫະບໍດີເຫຼົ່ານັ້ນທູນວ່າ "ເນື້ອຄວາມແຫ່ງທຳທີ່ທ່ານພຣະໂຄດົມຕັດໄວ້ໂດຍຫຍໍ້ບໍ່ຊົງຊີ້ແຈ່ງໃຫ້ພິດສະດານ ຂ້າພຣະອົງທັງຫຼາຍ ບໍ່ສາມາດຮູ້ໂດຍພິດສະດານໄດ້ ຂໍທ່ານພຣະໂຄດົມຈົ່ງສະແດງເນື້ອຄວາມແຫ່ງທຳ ທີ່ພຣະອົງຕັດໄວ້ໂດຍຫຍໍ້ ບໍ່ຊົງຊີ້ແຈ່ງໃຫ້ພິດສະດານແກ່ພວກຂ້າພຣະອົງທັງຫຼາຍ ໂດຍວິທີທີ່ພວກຂ້າພຣະອົງທັງຫຼາຍ ຈະເພິ່ງເຂົ້າໃຈຮູ້ໄດ້ໂດຍພິດສະດານດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ແລະຄະຫະບໍດີທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ເມື່ອພວກພາມ ແລະ ຄະຫະບໍດີຊາວເມືອງເວຣັນຊາ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

## ອະກຸສົນກຳມະບົດ ໑໐

[໔໔໔] "ພາມ ແລະຄະຫະບໍດີທັງຫຼາຍ ບຸກຄົນຜູ້ປະພຶດບໍ່ສະໝ່ຳສະເໝີ ຄື ຜູ້ປະພຶດອະທຳທາງກາຍມີ ໓ ຈຳພວກ ບຸກຄົນຜູ້ປະພຶດບໍ່ສະໝ່ຳສະເໝີ ຄື ຜູ້ປະພຶດອະທຳທາງວາຈາມີ ໔ ຈຳພວກ ບຸກຄົນຜູ້ປະພຶດບໍ່ສະໝ່ຳສະເໝີ ຄື ຜູ້ປະພຶດອະທຳທາງໃຈມີ ໓ ຈຳພວກ

ບຸກຄົນຜູ້ປະພຶດບໍ່ສະໝ່ຳສະເໝີ ຄື ຜູ້ປະພຶດອະທຳທາງກາຍມີ ໓ ຈຳພວກໃດແດ່?

ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ຂ້າສັດ ຄື ເປັນຄົນຫຍາບຊ້າ ມີມືເປື້ອນເລືອດ ປັກໃຈຢູ່ໃນການ ຂ້າ ແລະການທຸບຕີ ບໍ່ມີຄວາມລະອາຍ ບໍ່ມີຄວາມອີດູໃນສັດທັງປວງ

໒. ເປັນຜູ້ລັກຊັບ ຄື ເປັນຜູ້ຖືເອົາຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນ ເຊິ່ງຢູ່ໃນເຮືອນຫຼືໃນປ່າທີ່ເຈົ້າຂອງບໍ່ໄດ້ໃຫ້ ດ້ວຍຈິດເປັນເຫດລັກ

໓. ເປັນຜູ້ປະພຶດຜິດໃນກາມ ຄື ເປັນຜູ້ປະພຶດລ່ວງໃນສະຕີທີ່ຢູ່ໃນປົກຄອງຂອງມານດາ ຯລຯ

ບຸກຄົນຜູ້ປະພຶດບໍ່ສະໝ່ຳສະເໝີ ຄື ຜູ້ປະພຶດອະທຳທາງກາຍມີ ໓ ຈຳພວກ ແນວນີ້ແລ

ບຸກຄົນຜູ້ປະພຶດບໍ່ສະໝ່ຳສະເໝີ ຄື ຜູ້ປະພຶດອະທຳທາງວາຈາມີ ໔ ຈຳພວກໃດແດ່?

ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ເວົ້າຕົວະ ຄື ຢູ່ໃນສະພາ ຯລຯ ເປັນຜູ້ກ່າວຕົວະທັງທີ່ຮູ້ ຯລຯ

໒. ເປັນຜູ້ເວົ້າສໍ່ສຽດ ຄື ຟັງຄວາມຝ່າຍນີ້ແລ້ວໄປບອກຝ່າຍນັ້ນ ຯລຯ ເວົ້າແຕ່ຄຳເວົ້າທີ່ກໍ່ຄວາມແຕກແຍກກັນ

໓. ເປັນຜູ້ເວົ້າຄຳຫຍາບ ຄື ເວົ້າແຕ່ຄຳຫຍາບຄາຍ ກ້າແຂງ ຯລຯ

໔. ເປັນຜູ້ເວົ້າບໍ່ມີສາຣະ ຄື ເວົ້າບໍ່ຖືກເວລາ ເວົ້າຄຳທີ່ບໍ່ຈິງ ຯລຯ ບໍ່ມີທີ່ກຳນົດ ບໍ່ປະ ກອບດ້ວຍປະໂຫຍດ ໂດຍບໍ່ເໝາະແກ່ເວລາ

ບຸກຄົນຜູ້ປະພຶດບໍ່ສະໝ່ຳສະເໝີ ຄື ຜູ້ປະພຶດອະທຳທາງວາຈາມີ ໔ ຈຳພວກ ຢ່າງນີ້ແລ

ບຸກຄົນຜູ້ປະພຶດບໍ່ສະໝ່ຳສະເໝີ ຄື ຜູ້ປະພຶດອະທຳທາງໃຈມີ ໓ ຈຳພວກໃດແດ່?

ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ ຯລຯ "ເຮັດແນວໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາໄດ້"

໒. ເປັນຜູ້ມີຈິດພະຍາບາດ ຄື ມີຈິດຄິດຮ້າຍວ່າ "ຂໍໃຫ້ສັດເຫຼົ່ານີ້ ຈົງຖືກຂ້າ ຯລຯ ຫຼື ຢ່າໄດ້ມີອີກ"

໓. ເປັນມິດສາທິດຖິ ຄື ມີຄວາມເຫັນວິປະຣິດວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການບວງສວງບໍ່ມີຜົນ ຯລຯ ສອນຜູ້ອື່ນໃຫ້ຮູ້ແຈ້ງ ກໍບໍ່ມີໃນໂລກ"

ບຸກຄົນຜູ້ປະພຶດບໍ່ສະໝ່ຳສະເໝີ ຄື ຜູ້ປະພຶດອະທຳທາງໃຈມີ ໓ ຈຳພວກແນວນີ້ແລ

ພາມ ແລະຄະຫະບໍດີທັງຫຼາຍ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຍ້ອນຄວາມປະພຶດບໍ່ສະໝ່ຳສະເໝີ ຄື ຄວາມປະພຶດ ອະທຳເປັນເຫດແນວນີ້

## ກຸສົນກັມມະບົດ ໑໐

[໔໔໓] ພາມ ແລະຄະຫະບໍດີທັງຫຼາຍ ບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳທາງກາຍມີ ໓ ຈຳພວກ ບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳທາງວາຈາມີ ໔ ຈຳພວກ ບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳທາງໃຈມີ ໓ ຈຳພວກ

ບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳທາງກາຍມີ ໓ ຈຳພວກໃດແດ່?

ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ຄື ວາງທັນດາວຸດ ແລະ ສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໘. ເປັນຜູ້ລະເວັ້ນຂາດຈາກຈາກການລັກຊັບ ຄື ບໍ່ຖືເອົາຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນ ເຊິ່ງຢູ່ໃນເຮືອນ ຫຼື ໃນປ່າທີ່ເຈົ້າຂອງບໍ່ໄດ້ໃຫ້ ດ້ວຍຈິດເປັນເຫດລັກ

໓. ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຄື ບໍ່ເປັນຜູ້ປະພຶດລ່ວງໃນສະຕີທີ່ຢູ່ໃນປົກຄອງຂອງມານດາ ຯລຯ

ບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳທາງກາຍມີ ໓ ຈຳພວກ ແນວນີ້ແລ

ບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳທາງວາຈາມີ ໔ ຈຳພວກໃດແດ່?

ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຄື ຢູ່ໃນສະພາ ຯລຯ ບໍ່ກ່າວຕົວະທັງທີ່ຮູ້ຢູ່ ຯລຯ
໘. ເປັນຜູ້ລະເວັ້ນຂາດຈາກການເວົ້າສັບສໍ່ ຯລຯ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ
໓. ເປັນຜູ້ລະເວັ້ນຂາດຈາກການເວົ້າຄຳຫຍາບ ຯລຯ ເວົ້າແຕ່ຄຳບໍ່ມີໂທດ
໔. ເປັນຜູ້ລະເວັ້ນຂາດຈາກການເວົ້າບໍ່ມີສາລະ ຯລຯ ມີທີ່ອ້າງອີງ ມີທີ່ກຳນົດປະກອບດ້ວຍປະໂຫຍດ ເໝາະແກ່ເວລາ

ບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳທາງວາຈາມີ ໔ ຈຳພວກ ແນວນີ້ແລ

ບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳທາງໃຈ ໓ ຈຳພວກໃດແດ່?
ຄື ບຸກຄົນບາງຄົນໃນໂລກນີ້

໑. ເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ຄື ບໍ່ເພ່ງເລັງຢາກໄດ້ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນວ່າ "ເຮັດຢ່າງໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາໄດ້"

໘. ເປັນຜູ້ມີຈິດບໍ່ພະຍາບາດ ຄື ບໍ່ມີຈິດຄິດຮ້າຍ ວ່າ "ຂໍສັບພະສັດເຫຼົ່ານີ້ ຈົ່ງເປັນຜູ້ບໍ່ມີເວນ ບໍ່ມີຈິດພະຍາບາດ ບໍ່ມີທຸກ ມີສຸກ ຖືຮັກສາຕົນຢູ່ເທີ້ນ"

໓. ເປັນສຳມາທິດຖິ ຄື ມີຄວາມເຫັນບໍ່ວິປະຣິດວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ຯລຯ ຜູ້ເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ"

ບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳທາງໃຈມີ ໑ ຈຳພວກ ແນວນີ້ແລ

ພາມ ແລະ ຄະຫະບໍດີທັງຫຼາຍ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວ ໄປເກີດໃນສຸຄະຕິໂລກສະຫວັນ ຍ້ອນຄວາມປະພຶດສະໝ່ຳສະເໝີ ຄື ຄວາມປະພຶດທຳເປັນເຫດແນວນີ້

## ຜົນແຫ່ງຄວາມປະພຶດສະໝ່ຳສະເໝີ

[໔໔ກ] ພາມ ແລະຄະຫະບໍດີທັງຫຼາຍ ຖ້າບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນພວກຂັດຕິຍະມະຫາສານ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນຈະເພິ່ງເກີດໃນພວກຂັດຕິຍະມະຫາສານ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ເປັນຜູ້ປະພຶດສະໝ່ຳສະເໝີ ຄື ເປັນຜູ້ປະພຶດທຳ ແນວນັ້ນແລ

ຖ້າບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນພວກພາມມະນະມະຫາສານ ຯລຯ ເຮົາເພິ່ງເກີດໃນພວກຄະຫະບໍດີມະຫາສານ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນ ຈະເພິ່ງເກີດໃນຄະຫະບໍດີມະຫາສານ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ເປັນຜູ້ປະພຶດສະໝ່ຳສະເໝີ ຄື ເປັນຜູ້ປະພຶດທຳແນວນັ້ນແລ

ຖ້າບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນເທບຊັ້ນຈາຕຸມະຫາຣາດ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນ ຈະເພິ່ງເກີດໃນເທບຊັ້ນຈາຕຸມະຫາຣາດ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນເປັນຜູ້ປະພຶດສະໝ່ຳສະເໝີ ຄື ເປັນຜູ້ປະພຶດທຳ ແນວນັ້ນແລ

ຖ້າບຸກຄົນປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນເທບຊັ້ນຕາວະຕຶງສາ ຯລຯ ເທບຊັ້ນຍາມາ ຯລຯ ເທບຊັ້ນດຸສິດ ຯລຯ ເທບຊັ້ນນິມມານະຣະດີ ຯລຯ ເທບຊັ້ນປະຣະນິມມິດະວະສະວັດດີ ຯລຯ ເທບຜູ້ນັບເນື່ອງໃນໝູ່ພົມ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນ ຈະເພິ່ງເກີດໃນເທບຜູ້ນັບເນື່ອງໃນໝູ່ພົມ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນເປັນຜູ້ປະພຶດສະໝ່ຳສະເໝີ ຄື ເປັນຜູ້ປະພຶດທຳແນວນັ້ນແລ

ຖ້າບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນເທບຊັ້ນອາພາ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນຈະເພິ່ງເກີດໃນເທບຊັ້ນອາພາ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ເປັນຜູ້ປະພຶດສະໝ່ຳສະເໝີ ຄື ເປັນຜູ້ປະພຶດທຳແນວນັ້ນແລ

ຖ້າບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳຈະເພິ່ງຫວັງວ່າ "ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດໃນເທບຊັ້ນປະຣິດຕາພາ ຯລຯ ເທບຊັ້ນອັບປະມານາພາ ຯລຯ ເທບຊັ້ນອາພັດສະຣາ ຯລຯ ເທບຊັ້ນປະຣິດຕະສຸພາ ຯລຯ ເທບຊັ້ນອັບປະມານະສຸພາ ຯລຯ ເທບຊັ້ນສຸພະກິນຫາ ຯລຯ ເທບຊັ້ນເວຫັບຜະລາ ຯລຯ ເທບຊັ້ນອະວິຫາ ຯລຯ ເທບຊັ້ນອະຕັບປາ ຯລຯ ເທບຊັ້ນສຸທັດສາ ຯລຯ ເທບຊັ້ນສຸທັດສີ ຯລຯ ເທບຊັ້ນອະກະນິດຖະພົບ ຯລຯ ເທບຜູ້ເຂົ້າເຖິງອາກາສານັນຈາຍະຕະນະພົບ ຯລຯ ເທບຜູ້ເຂົ້າເຖິງວິນຍານັນຈາຍະຕະນະພົບ ຯລຯ ເທບຜູ້ເຂົ້າເຖິງອາກິນຈັນຍາຍະຕະນະພົບ ຯລຯ ເທບຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພົບ" ເປັນໄປໄດ້ທີ່ຫຼັງຈາກຕາຍແລ້ວ ບຸກຄົນນັ້ນ ຈະເພິ່ງເກີດໃນເທບຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພົບ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ເປັນຜູ້ປະພຶດສະໝ່ຳສະເໝີ ຄືເປັນຜູ້ປະພຶດທຳແນວນັ້ນແລ

ພາມ ແລະຄະຫະບໍດີທັງຫຼາຍ ຖ້າບຸກຄົນຜູ້ປະພຶດສະໝ່ຳສະເໝີ ຄື ຜູ້ປະພຶດທຳຈະເພິ່ງຫວັງວ່າ "ເຮັດແນວໃດນໍ ເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ" ເປັນໄປໄດ້ທີ່ບຸກຄົນນັ້ນຈະເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ເປັນຜູ້ປະພຶດສະໝ່ຳສະເໝີ ຄື ເປັນຜູ້ປະພຶດທຳ ແນວນັ້ນແລ"

## ຊາວເມືອງເວຣັນຊາເຖິງພຣະຣັດຕະນະໄຕຣ

[໔໔໗] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພວກສະມະນະພາມແລະຄະຫະບໍດີຊາວເມືອງເວຣັນຊາໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ທ່ານພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມຜູ້ຈະເລີນ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບເໝືອນບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງທັງຫຼາຍນີ້ ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງທັງຫຼາຍວ່າ ເປັນອຸປາສົກຜູ້ເຖິງສະຣະນະ ນັບຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ເວຣັນຊະກະສູດທີ ໔ ຈົບ**

# ៩. ມະຫາເວທັນລະສູດ

## ວ່າດ້ວຍການສົນທະນາທຳທີ່ເຮັດໃຫ້ເກີດປັນຍາ ສູດໃຫຍ່

## ປັນຍາກັບວິນຍານ

[໔໔໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ເມື່ອໃນເວລາຄໍ່າ ທ່ານພຣະມະຫາໂກດຖິກະອອກຈາກທີ່ຫຼີກລີ້ ແລ້ວ ເຂົ້າໄປຫາທ່ານພຣະສາຣີບຸດເຖິງທີ່ຢູ່ ໄດ້ສົນທະນາປາໄສພໍເປັນທີບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ

ທ່ານພຣະມະຫາໂກດຖິກະ ເມື່ອນັ່ງຮຽບຮ້ອຍແລ້ວ ຈຶ່ງຖາມເລື້ອງນີ້ກັບທ່ານພຣະສາຣີບຸດວ່າ

"ທ່ານຜູ້ມີອາຍຸ ບຸກຄົນທີ່ຮຽກວ່າ "ຜູ້ມີປັນຍາຊາມ ຜູ້ມີປັນຍາຊາມ" ຍ້ອນເຫດໃດນໍ? ຈຶ່ງຮຽກວ່າ "ຜູ້ມີປັນຍາຊາມ"

ທ່ານພຣະສາຣີບຸດຕອບ ວ່າ "ທ່ານຜູ້ມີອາຍຸ ບຸກຄົນບໍ່ຮູ້ແຈ້ງ ບຸກຄົນບໍ່ຮູ້ແຈ້ງ ເຫດນັ້ນຈຶ່ງຮຽກວ່າ "ຜູ້ມີປັນຍາຊາມ" ບຸກຄົນບໍ່ຮູ້ແຈ້ງອັນໃດ ຄື ບໍ່ຮູ້ແຈ້ງວ່າ "ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ເຫດນັ້ນ ບຸກຄົນບໍ່ຮູ້ແຈ້ງ ບຸກຄົນບໍ່ຮູ້ແຈ້ງ ຈຶ່ງຮຽກ ວ່າ "ຜູ້ມີປັນຍາຊາມ"

ທ່ານພຣະມະຫາໂກດຖິກະຊົມຊື່ນ ຍິນດີພາສິດຂອງທ່ານພຣະສາຣີບຸດ ວ່າ "ດີແລ້ວທ່ານຜູ້ມີອາຍຸ" ແລ້ວໄດ້ຖາມບັນຫາຕໍ່ໄປວ່າ "ທ່ານຜູ້ມີອາຍຸ ບຸກຄົນທີ່ຮຽກວ່າ "ຜູ້ມີປັນຍາ ຜູ້ມີປັນຍາ" ຍ້ອນເຫດໃດນໍ? ຈຶ່ງຮຽກວ່າ "ຜູ້ມີປັນຍາ"

"ບຸກຄົນຮູ້ແຈ້ງ ບຸກຄົນຮູ້ແຈ້ງ ເຫດນັ້ນ ຈຶ່ງຮຽກວ່າ "ຜູ້ມີປັນຍາ" ບຸກຄົນຮູ້ແຈ້ງອັນໃດ ຄືຮູ້ແຈ້ງວ່າ "ນີ້ທຸກ ນີ້ທຸກຂະສະມຸທັຍ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ເຫດນັ້ນ ບຸກຄົນຮູ້ແຈ້ງ ບຸກຄົນຮູ້ແຈ້ງ ຈຶ່ງຮຽກວ່າ "ຜູ້ມີປັນຍາ"

"ສະພາວະທີ່ຮຽກວ່າ "ວິນຍານ ວິນຍານ" ຍ້ອນເຫດໃດນໍ? ຈຶ່ງຮຽກວ່າ "ວິນຍານ"

"ສະພາວະຮູ້ແຈ້ງ ສະພາວະຮູ້ແຈ້ງ ເຫດນັ້ນ ຈຶ່ງຮຽກວ່າ "ວິນຍານ" ສະພາວະຮູ້ແຈ້ງ ອັນໃດ ຄື ຮູ້ແຈ້ງສຸກແດ່ ຮູ້ແຈ້ງທຸກແດ່ ຮູ້ແຈ້ງອທຸກຂະມະສຸຂະແດ່ ເຫດນັ້ນ ສະພາວະຮູ້ແຈ້ງ ສະພາວະຮູ້ແຈ້ງ ຈຶ່ງຮຽກວ່າ "ວິນຍານ"

"ປັນຍາແລະວິນຍານ ໒ ປະການນີ້ ລວມກັນ ຫຼື ແຍກກັນ ແລະ ສາມາດແຍກແຍະບັນຍັດໜ້າທີ່ຕ່າງກັນໄດ້ຫຼືບໍ່?"

"ປັນຍາແລະວິນຍານ ໒ ປະການນີ້ ລວມກັນ ບໍ່ແຍກກັນ ແລະ ບໍ່ສາມາດແຍກແຍະບັນຍັດໜ້າທີ່ຕ່າງກັນໄດ້ ຍ້ອນປັນຍາຮູ້ແຈ້ງສິ່ງໃດ ວິນຍານກໍຮູ້ແຈ້ງສິ່ງນັ້ນ ວິນຍານຮູ້ແຈ້ງສິ່ງໃດ ປັນຍາກໍຮູ້ແຈ້ງສິ່ງນັ້ນ ເຫດນັ້ນທຳ ໒ ປະການນີ້ ຈຶ່ງລວມກັນ ບໍ່ແຍກກັນ ແລະ ບໍ່ສາມາດແຍກແຍະບັນຍັດໜ້າທີ່ຕ່າງກັນໄດ້"

"ທ່ານຜູ້ມີອາຍຸ ປັນຍາແລະວິນຍານ ໒ ປະການນີ້ ລວມກັນ ບໍ່ແຍກກັນ ແຕ່ມີກິດທີ່ຈະເພິ່ງເຮັດຕ່າງກັນແດ່ບໍ?"

"ທ່ານຜູ້ມີອາຍຸ ປັນຍາແລະວິນຍານ ໒ ປະການນີ້ ລວມກັນ ບໍ່ແຍກກັນ ແຕ່ປັນຍາຄວນຈະເລີນ ວິນຍານຄວນກຳນົດຮູ້ ນີ້ເປັນກິດທີ່ຈະເພິ່ງເຮັດຕ່າງກັນແຫ່ງທຳ ໒ ປະການນີ້"

## ເວທະນາສັນຍາແລະວິນຍານ

[໔໕໐] "ທ່ານຜູ້ມີອາຍຸ ສະພາວະທີ່ຮຽກວ່າ "ເວທະນາ ເວທະນາ" ຍ້ອນເຫດໃດນໍ? ຈຶ່ງຮຽກວ່າ "ເວທະນາ"

"ທ່ານຜູ້ມີອາຍຸ ສະພາວະສະເຫວີຍອາລົມ ສະພາວະສະເຫວີຍອາລົມ ເຫດນັ້ນ ຈຶ່ງຮຽກວ່າ "ເວທະນາ" ສະພາວະສະເຫວີຍອາລົມອັນໃດ ຄື ສະເຫວີຍອາລົມສຸກແດ່ ສະເຫວີຍອາລົມທຸກແດ່ ສະເຫວີຍອາລົມອະທຸກຂະມະສຸຂະແດ່ ເຫດນັ້ນ ສະພາວະສະເຫວີຍອາລົມ ສະພາວະສະເຫວີຍອາລົມ ຈຶ່ງຮຽກວ່າ "ເວທະນາ"

"ສະພາວະທີ່ຮຽກວ່າ "ສັນຍາ ສັນຍາ" ຍ້ອນເຫດໃດນໍ? ຈຶ່ງຮຽກ ວ່າ "ສັນຍາ"

"ສະພາວະກຳນົດໝາຍ ສະພາວະກຳນົດໝາຍ ເຫດນັ້ນ ຈຶ່ງຮຽກວ່າ "ສັນຍາ" ສະພາວະກຳນົດໝາຍອັນໃດ? ຄື ກຳນົດໝາຍສີຂຽວແດ່ ກຳນົດໝາຍສີເຫລືອງແດ່ ກຳນົດໝາຍສີແດງແດ່ ກຳນົດໝາຍສີຂາວແດ່ ເຫດນັ້ນ ສະພາວະກຳນົດໝາຍ ສະພາວະກຳນົດໝາຍ ຈຶ່ງຮຽກວ່າ "ສັນຍາ"

"ເວທະນາ ສັນຍາ ແລະ ວິນຍານ ໓ ປະການນີ້ ລວມກັນ ຫຼື ແຍກກັນ ແລະ ສາມາດແຍກແຍະບັນຍັດໜ້າທີ່ຕ່າງກັນໄດ້ແດ່ບໍ?"

"ເວທະນາ ສັນຍາ ແລະວິນຍານ ໓ ປະການນີ້ ລວມກັນ ບໍ່ແຍກກັນ ແລະ ບໍ່ສາມາດແຍກແຍະບັນຍັດໜ້າທີ່ຕ່າງກັນໄດ້ ຍ້ອນເວທະນາສະເຫວີຍອາລົມສິ່ງໃດ ສັນຍາ ກໍກຳນົດໝາຍສິ່ງນັ້ນ ສັນຍາກຳນົດໝາຍສິ່ງໃດ ວິນຍານກໍຮູ້ແຈ້ງສິ່ງນັ້ນ ເຫດນັ້ນ ທຳ ໓ ປະການນີ້ ຈຶ່ງລວມກັນ ບໍ່ແຍກກັນ ແລະ ບໍ່ສາມາດແຍກແຍະບັນຍັດໜ້າທີ່ ຕ່າງກັນໄດ້"

[໔໕໑] "ທ່ານຜູ້ມີອາຍຸ ພຣະໂຍຄາວະຈອນຜູ້ມີມະໂນວິນຍານ[໑] ອັນບໍລິສຸດ ສະຫຼະແລ້ວຈາກອິນຊີ ໕ ຈະເພິ່ງຮູ້ອັນໃດ?"

"ທ່ານຜູ້ມີອາຍຸ ພຣະໂຍຄາວະຈອນຜູ້ມີມະໂນວິນຍານອັນບໍລິສຸດ ສະລະແລ້ວຈາກອິນຊີ ໕ ເພິ່ງຮູ້ອາກາສານັນຈາຍະຕະນະຊານວ່າ "ອາກາດຫາບ່ອນສຸດບໍ່ໄດ້" ເພິ່ງຮູ້ວິນຍານັນຈາຍະຕະນະຊານວ່າ "ວິນຍານຫາທີ່ສຸດບໍ່ໄດ້" ເພິ່ງຮູ້ອາກິນຈັນຍາຍະຕະນະຊານວ່າ "ບໍ່ມີອັນໃດ"[໑]

"ພຣະໂຍຄາວະຈອນ ຍ່ອມຮູ້ທຳທີ່ຕົນຈະເພິ່ງຮູ້ດ້ວຍອັນໃດ?"
"ພຣະໂຍຄາວະຈອນ ຍ່ອມຮູ້ທຳທີ່ຕົນຈະເພິ່ງຮູ້ດ້ວຍປັນຍາຈັກຂຸ"
"ປັນຍາມີໄວ້ເພື່ອອັນໃດ?"
"ປັນຍາມີໄວ້ເພື່ອຄວາມຮູ້ຍິ່ງ ເພື່ອການກຳນົດຮູ້ ແລະ ເພື່ອການລະ"

## ປັດໄຈແຫ່ງສຳມາທິດຖິ

[໔໕໒] "ທ່ານຜູ້ມີອາຍຸ ປັດໄຈໃຫ້ເກີດສຳມາທິດຖິມີທໍ່ໃດ?"

"ທ່ານຜູ້ມີອາຍຸ ປັດໄຈໃຫ້ເກີດສຳມາທິດຖິມີ ໒ ປະການ ຄື

໑. ປະຣະໂຕໂຄສະ[໓] (ການໄດ້ສະດັບຈາກບຸກຄົນອື່ນ)
໒. ໂຍນິໂສມະນະສິການ[໔] (ການມະນະສິການໂດຍແຍບຄາຍ)

ປັດໄຈໃຫ້ເກີດສຳມາທິດຖິມີ ໒ ປະການນີ້ແລ"

"ສຳມາທິດຖິ[໑] ເຊິ່ງມີເຈໂຕວິມຸດຕິເປັນຜົນ ແລະ ມີເຈໂຕວິມຸດຕິເປັນຜະລານິສົງ ມີປັນຍາວິມຸດຕິເປັນຜົນ ແລະ ມີປັນຍາວິມຸດຕິເປັນຜະລານິສົງ ຍ້ອນມີອົງທຳທໍ່ໃດສະໜັບສະໜູນ"

"ສຳມາທິດຖິ ເຊິ່ງມີເຈໂຕວິມຸດຕິເປັນຜົນ ແລະ ມີເຈໂຕວິມຸດຕິເປັນຜະລານິສົງ ມີປັນຍາວິມຸດຕິເປັນຜົນ ແລະ ມີປັນຍາວິມຸດຕິເປັນຜະລານິສົງ ຍ້ອນມີອົງທຳ ໕ ປະການ ສະໜັບສະໜູນ ຄື

໑. ມີສີນ[໒] ສະໜັບສະໜູນ
໒. ມີສຸຕະ[໓] ສະໜັບສະໜູນ

໓. ມີສາກັກສາ[໒] ສະໜັບສະໜູນ
໔. ມີສະມະຖະ[໒] ສະໜັບສະໜູນ
໕. ມີວິປັດສະນາ[໓] ສະໜັບສະໜູນ

ສຳມາທິດຖິເຊິ່ງມີເຈໂຕວິມຸດຕິເປັນຜົນ ແລະ ມີປັນຍາວິມຸດຕິເປັນຜະລານິສົງ ມີປັນຍາວິມຸດຕິເປັນຜົນ ແລະ ມີປັນຍາວິມຸດຕິເປັນຜະລານິສົງ ຍ້ອນມີອົງທຳ ໕ ປະການນີ້ ສະໜັບສະໜູນ"

## ພົບແລະຊານ

[໔໕໓] "ທ່ານຜູ້ມີອາຍຸ ພົບມີທີ່ໃດ?"

"ທ່ານຜູ້ມີອາຍຸ ພົບມີ ໓ ຄື (໑) ກາມະພົບ (໒) ຣູປະພົບ (໓) ອະຣູປະພົບ"

"ການເກີດໃນພົບໃໝ່ຕໍ່ໄປ ມີໄດ້ແນວໃດ?"

"ຍ້ອນຄວາມຍິນດີຍິ່ງໃນອາລົມນັ້ນ ໆ ຂອງເຫຼົ່າສັດທີ່ມີອະວິດຊາເປັນເຄື່ອງກີດກັ້ນ ມີຕັນຫາເປັນເຄື່ອງມັດພັນໄວ້ ການເກີດໃນພົບໃໝ່ຕໍ່ໄປ ຍ່ອມມີໄດ້ແນວນີ້"

"ການເກີດໃນພົບໃໝ່ຕໍ່ໄປ ບໍ່ມີໄດ້ແນວໃດ?"

"ຍ້ອນອະວິດຊາສິ້ນໄປ ຍ້ອນວິດຊາເກີດຂຶ້ນ ແລະ ຍ້ອນຕັນຫາດັບໄປ ການເກີດຂຶ້ນໃນພົບໃໝ່ຕໍ່ໄປ ບໍ່ມີໄດ້ແນວນີ້"

[໔໕໔] "ທ່ານຜູ້ມີອາຍຸ ປະຖົມຊານ ເປັນແນວໃດ?"

"ທ່ານຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ຊານນີ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ປະຖົມຊານ" "ປະຖົມຊານມີອົງທີ່ໃດ?"

"ປະຖົມຊານມີອົງ ໕ ຄື ພິກຂຸຜູ້ເຂົ້າປະຖົມຊານຍ່ອມມີ (໑) ວິຕົກ (໒) ວິຈານ (໓) ປີຕິ (໔) ສຸກ (໕) ເອກັກຄະຕາ ປະຖົມຊານມີອົງ ໕ ແນວນີ້"

"ປະຖົມຊານລະອົງໃດ? ປະກອບດ້ວຍອົງໃດ?"

"ປະຖົມຊານລະອົງ ໕ ປະກອບດ້ວຍອົງ ໕ ຄື ພິກຂຸໃນພຣະທຳວິໄນນີ້ເຂົ້າປະຖົມຊານ (໑) ລະກາມສັນທະ (໒) ລະພະຍາບາດ (໓) ລະຖີນະມິດທະ (໔) ລະອຸດທັດຈະກຸກກຸດຈະ

(໕) ລະວິຈິກິດສາໄດ້ແລ້ວ ຍ່ອມມີ (໑) ວິຕົກ (໒) ວິຈານ (໓) ປີຕິ (໔) ສຸກ (໕) ເອກັກຄະຕາ ປະຖົມຊານລະອົງ ໕ ປະກອບດ້ວຍ ອົງ ໕ ແນວນີ້"

## ອິນຊີ ໕

[໔໕໕] "ທ່ານຜູ້ມີອາຍຸ ອິນຊີ ໕ ປະການນີ້ ຄື (໑) ຈັກຂຸນຊີ (໒) ໂສຕິນຊີ (໓) ຄານິນຊີ (໔) ຊິວຫິນຊີ (໕) ກາຍິນຊີ ມີອາລົມຕ່າງກັນ ມີທີ່ທ່ຽວໄປຕ່າງກັນ ບໍ່ຮັບຮູ້ອາລົມອັນເປັນທີ່ທ່ຽວໄປຂອງກັນແລະກັນ ເມື່ອອິນຊີ ໕ ປະການນີ້ມີອາລົມຕ່າງກັນ ມີທີ່ທ່ຽວໄປຕ່າງກັນ ບໍ່ຮັບຮູ້ອາລົມອັນເປັນທີ່ທ່ຽວໄປຂອງກັນແລະກັນ ຈະມີອັນໃດເປັນທີ່ອາໄສ ແລະ ທຳອັນໃດຮັບຮູ້ອາລົມອັນເປັນທີ່ທ່ຽວໄປແຫ່ງອິນຊີ ໕ ປະການນັ້ນ"

"ທ່ານຜູ້ມີອາຍຸ ອິນຊີ ໕ ປະການນີ້ ຄື (໑) ຈັກຂຸນຊີ (໒) ໂສຕິນຊີ (໓) ຄານິນຊີ (໔) ຊິວຫິນຊີ (໕) ກາຍິນຊີ ມີອາລົມຕ່າງກັນ ມີທີ່ທ່ຽວໄປຕ່າງກັນ ບໍ່ຮັບຮູ້ອາລົມອັນເປັນທີ່ທ່ຽວໄປຂອງກັນແລະກັນ ເມື່ອອິນຊີເຫຼົ່ານີ້ມີອາລົມຕ່າງກັນມີທີ່ທ່ຽວໄປຕ່າງກັນ ບໍ່ຮັບຮູ້ອາລົມອັນເປັນທີ່ທ່ຽວໄປຂອງກັນແລະກັນ ມີໃຈເປັນທີ່ອາໄສ ແລະ ໃຈຍ່ອມຮັບຮູ້ອາລົມອັນເປັນທີ່ທ່ຽວໄປແຫ່ງອິນຊີເຫຼົ່ານັ້ນ"

[໔໕໖] "ທ່ານຜູ້ມີອາຍຸ ອິນຊີ ໕ ປະການນີ້ ຄື (໑) ຈັກຂຸນຊີ (໒) ໂສຕິນຊີ (໓) ຄານິນຊີ (໔) ຊິວຫິນຊີ (໕) ກາຍິນຊີ ອິນຊີ ໕ ປະການນີ້ອາໄສອັນໃດດຳລົງຢູ່"

"ທ່ານຜູ້ມີອາຍຸ ອິນຊີ ໕ ປະການນີ້ ຄື (໑) ຈັກຂຸນຊີ (໒) ໂສຕິນຊີ (໓) ຄານິນຊີ (໔) ຊິວຫິນຊີ (໕) ກາຍິນຊີ ອິນຊີ ໕ ປະການນີ້ ອາໄສອາຍຸ ດຳລົງຢູ່

"ອາຍຸອາໄສອັນໃດ? ດຳລົງຢູ່"
"ອາຍຸອາໄສອາຍອຸ່ນ໌ ດຳລົງຢູ່"
"ອາຍອຸ່ນອາໄສອັນໃດ? ດຳລົງຢູ່"
"ອາຍອຸ່ນອາໄສອາຍຸ ດຳລົງຢູ່"

"ເຮົາຮູ້ທົ່ວເຖິງພາສິດຂອງທ່ານພຣະສາຣີບຸດໃນບັດນີ້ເອງແນວນີ້ວ່າ "ອາຍຸອາໄສອາຍອຸ່ນດຳລົງຢູ່ ແລະ ອາຍອຸ່ນອາໄສອາຍຸດຳລົງຢູ່" ແຕ່ເຮົາຈະເພິ່ງເຂົ້າໃຈຄວາມແຫ່ງພາສິດນີ້ໄດ້ແນວໃດ?"

"ຖ້າເຊັ່ນນັ້ນ ເຮົາຈັກອຸປະມາໃຫ້ທ່ານຟັງ ຍ້ອນວິນຍູຊົນລາງພວກໃນໂລກນີ້ຍ່ອມຮູ້ຄວາມແຫ່ງພາສິດໄດ້ດ້ວຍອຸປະມາ ເມື່ອປະທີບນ້ຳມັນກຳລັງຕິດໄຟຢູ່ ແສງສະຫວ່າງອາໄສນ້ຳມັນໄຟຈຶ່ງຜາກົດ ນ້ຳມັນໄຟກໍອາໄສແສງສະຫວ່າງຈຶ່ງຜາກົດຢູ່ແມ່ນສັນໃດ ອາຍຸອາໄສອາຍ

ອຸ່ນດຳລົງຢູ່ ອາຍອຸ່ນກໍອາໄສອາຍຸດຳລົງຢູ່ ກໍຄືກັນສັນນັ້ນ”

[໔໕໗] “ທ່ານຜູ້ມີອາຍຸ ອາຍຸສັງຂານ ກັບເວທະນີຍະທຳ ເປັນອັນດຽວກັນ ຫຼື ຕ່າງກັນ”

“ທ່ານຜູ້ມີອາຍຸ ອາຍຸສັງຂານກັບເວທະນີຍະທຳ ບໍ່ເປັນອັນດຽວກັນ (ຖ້າ) ອາຍຸສັງຂານກັບເວທະນີຍະທຳເປັນອັນດຽວກັນແລ້ວ ການອອກຈາກສະມາບັດຂອງພິກຂຸຜູ້ເຂົ້າສັນຍາເວທະຍິຕະນິໂຣດ ກໍບໍ່ເພິ່ງຜາກົດ ແຕ່ຍ້ອນອາຍຸສັງຂານກັບເວທະນີຍະທຳຕ່າງກັນ ສະນັ້ນ ການອອກຈາກສະມາບັດຂອງພິກຂຸຜູ້ເຂົ້າສັນຍາເວທະຍິຕະນິໂຣດ ຈຶ່ງຜາກົດ”

“ເມື່ອທຳທໍ່ໃດລະກາຍນີ້ໄປ ກາຍນີ້ຈຶ່ງຖືກທອດຖິ້ມນອນນິ່ງເໝືອນທ່ອນໄມ້ທີ່ປາສະຈາກເຈຕະນາ”

“ເມື່ອທຳ ໓ ປະການ ຄື (໑) ອາຍຸ (໒) ໄອອຸ່ນ (໓) ວິນຍານ[๑] ລະກາຍນີ້ໄປ ກາຍນີ້ຈຶ່ງຖືກປະຖິ້ມ ນອນນິ່ງເໝືອນທ່ອນໄມ້ທີ່ປາສະຈາກເຈຕະນາ”

“ສັດຜູ້ຕາຍ ຄື ທຳກາລະໄປແລ້ວ ກັບພິກຂຸຜູ້ເຂົ້າສັນຍາເວທະຍິຕະນິໂຣດຕ່າງກັນຢ່າງໃດ?”

“ສັດຜູ້ຕາຍ ຄື ທຳກາລະໄປແລ້ວມີກາຍສັງຂານ ວະຈີສັງຂານ ແລະ ຈິດຕະສັງຂານ[๒] ດັບລະງັບໄປ ມີອາຍຸໝົດສິ້ນໄປ ບໍ່ມີອາຍອຸ່ນມີອິນຊີແຕກທຳລາຍ ສ່ວນພິກຂຸຜູ້ເຂົ້າສັນຍາເວທະຍິຕນິໂຣດມີກາຍສັງຂານ ວະຈີສັງຂານ ແລະ ຈິດຕະສັງຂານດັບ ລະງັບໄປ ແຕ່ອາຍຸຍັງບໍ່ໝົດສິ້ນ ຍັງມີອາຍອຸ່ນມີອິນຊີຜ່ອງໃສ ສັດຜູ້ຕາຍ ຄື ທຳກາລະໄປແລ້ວກັບພິກຂຸຜູ້ເຂົ້າສັນຍາເວທະຍິຕະນິໂຣດ ຕ່າງກັນຢ່າງນີ້”

## ປັດໄຈແຫ່ງເຈໂຕວິມຸດຕິ

[໔໕໘] “ທ່ານຜູ້ມີອາຍຸ ປັດໄຈແຫ່ງການເຂົ້າເຈໂຕວິມຸດຕິ ເຊິ່ງບໍ່ມີທຸກ ບໍ່ມີສຸກມີທໍ່ໃດ?”

“ທ່ານຜູ້ມີອາຍຸ ປັດໄຈແຫ່ງການເຂົ້າເຈໂຕວິມຸດຕິ ເຊິ່ງບໍ່ມີທຸກ ບໍ່ມີສຸກມີ ໔ ປະການ ຄື (໑) ຍ້ອນລະສຸກໄດ້ (໒) ຍ້ອນລະທຸກໄດ້ (໓) ຍ້ອນໂສມະນັດດັບໄປກ່ອນ (໔) ຍ້ອນໂທມະນັດດັບໄປກ່ອນແລ້ວ ພິກຂຸໃນພຣະທຳວິໄນນີ້ ຈຶ່ງບັນລຸຈະຕຸດຖະຊານ ເຊິ່ງບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ປັດໄຈແຫ່ງການເຂົ້າເຈໂຕວິມຸດຕິ ເຊິ່ງບໍ່ມີທຸກ ບໍ່ມີສຸກມີ ໔ ປະການນີ້ແລ”

“ປັດໄຈແຫ່ງການເຂົ້າເຈໂຕວິມຸດຕິ ເຊິ່ງບໍ່ມີນິມິດ[๓] ມີທໍ່ໃດ?”

"ປັດໄຈແຫ່ງການເຂົ້າເຈໂຕວິມຸດຕິ ເຊິ່ງບໍ່ມີນິມິດມີ ໒ ປະການ ຄື

໑. ການບໍ່ມະນະສິການເຖິງນິມິດທັງປວງ[໒]
໒. ການມະນະສິການເຖິງນິບພານທາດ ເຊິ່ງບໍ່ມີນິມິດ[໓]

"ປັດໄຈແຫ່ງການເຂົ້າເຈໂຕວິມຸດຕິ ເຊິ່ງບໍ່ມີນິມິດມີ ໒ ປະການນີ້ແລ"

"ປັດໄຈແຫ່ງການຕັ້ງຢູ່ແຫ່ງເຈໂຕວິມຸດຕິ ເຊິ່ງບໍ່ມີນິມິດ ມີທີ່ໃດ?"

"ປັດໄຈແຫ່ງການຕັ້ງຢູ່ແຫ່ງເຈໂຕວິມຸດຕິ ເຊິ່ງບໍ່ມີນິມິດມີ ໓ ປະການ ຄື

໑. ບໍ່ມະນະສິການເຖິງນິມິດທັງປວງ
໒. ມະນະສິການເຖິງນິບພານທາດ ເຊິ່ງບໍ່ມີນິມິດ
໓. ອະພິສັງຂານ[໔]ໃນເບື້ອງຕົ້ນ

"ປັດໄຈແຫ່ງການຕັ້ງຢູ່ແຫ່ງເຈໂຕວິມຸດຕິ ເຊິ່ງບໍ່ມີນິມິດມີ ໓ ປະການນີ້ແລ"

"ປັດໄຈແຫ່ງການອອກຈາກເຈໂຕວິມຸດຕິ ເຊິ່ງບໍ່ມີນິມິດ ມີທີ່ໃດ?"

"ປັດໄຈແຫ່ງການອອກຈາກເຈໂຕວິມຸດຕິ ເຊິ່ງບໍ່ມີນິມິດມີ ໒ ປະການ ຄື

໑. ການມະນະສິການເຖິງນິມິດທັງປວງ
໒. ການບໍ່ມະນະສິການເຖິງນິບພານທາດ ເຊິ່ງບໍ່ມີນິມິດ

"ປັດໄຈແຫ່ງການອອກຈາກເຈໂຕວິມຸດຕິ ເຊິ່ງບໍ່ມີນິມິດມີ ໒ ປະການນີ້ແລ"

[໔໕໙] "ທ່ານຜູ້ມີອາຍຸ ທຳເຫຼົ່ານີ້ ຄື ອັບປະມານາເຈໂຕວິມຸດຕິ[໕]

ອາກິນຈັນຍາເຈໂຕວິມຸດຕິ[໖] ສູນຍະຕາເຈໂຕວິມຸດຕິ ອະນິມິດຕາເຈໂຕວິມຸດຕິ[໗] ມີອັດຖະຕ່າງກັນ ມີພະຍັນຊະນະຕ່າງກັນ ຫຼື ມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະທີ່ນັ້ນ"

"ທ່ານຜູ້ມີອາຍຸ ຍ້ອນອາໄສເຫດໃດ ທຳເຫຼົ່ານີ້ ຈຶ່ງມີອັດຖະຕ່າງກັນ ແລະ ມີພະຍັນຊະນະຕ່າງກັນ ເຫດນັ້ນມີຢູ່ ອັນໜຶ່ງ ຍ້ອນອາໄສເຫດໃດ ທຳເຫຼົ່ານີ້ຈຶ່ງມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະທີ່ນັ້ນ ເຫດນັ້ນມີຢູ່"

"ຍ້ອນອາໄສເຫດໃດ? ທຳເຫຼົ່ານີ້ ຈຶ່ງມີອັດຖະຕ່າງກັນ ແລະ ມີພະຍັນຊະນະຕ່າງກັນ ເຫດນັ້ນເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກ

ທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍເມດຕາຈິດ ອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ນີ້ຮຽກວ່າ "ອັບປະມານາເຈໂຕວິມຸດຕິ"

ອາກິນຈັນຍາເຈໂຕວິມຸດຕິ ເປັນແນວໃດ?

ຄື ຍ້ອນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸໃນພຣະທຳວິໄນນີ້ບັນລຸອາກິນຈັນຍາຍະຕະນະຊານຢູ່ໂດຍກຳນົດວ່າ "ບໍ່ມີອັນໃດ"

ນີ້ຮຽກວ່າ "ອາກິນຈັນຍາເຈໂຕວິມຸດຕິ"

ສູນຍະຕາເຈໂຕວິມຸດຕິ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ຢູ່ໃນປ່າກໍດີ ຢູ່ທີ່ເຫງົ້າໄມ້ກໍດີ ຢູ່ໃນເຮືອນວ່າງກໍດີ ພິຈາລະນາເຫັນວ່າ "ສິ່ງນີ້ວ່າງຈາກຕົນແດ່ ຈາກສິ່ງທີ່ເນື່ອງດ້ວຍຕົນແດ່"

ນີ້ຮຽກວ່າ "ສູນຍະຕາເຈໂຕວິມຸດຕິ"

ອະນິມິດຕາເຈໂຕວິມຸດຕິ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ບັນລຸອະນິມິດຕາເຈໂຕສະມາທິ ຍ້ອນບໍ່ມະນະສິການເຖິງນິມິດທັງປວງຢູ່

ນີ້ຮຽກວ່າ "ອະນິມິດຕາເຈໂຕວິມຸດຕິ"

ຍ້ອນອາໄສເຫດໃດ ທຳເຫຼົ່ານີ້ ຈຶ່ງມີອັດຖະຕ່າງກັນ ແລະ ມີພະຍັນຊະນະຕ່າງກັນ ເຫດນັ້ນ ເປັນແນວນີ້ແລ

ຍ້ອນອາໄສເຫດໃດ ທຳເຫຼົ່ານີ້ ຈຶ່ງມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ ເຫດນັ້ນ ເປັນແນວໃດ?

ຄື ຣາຄະຊື່ວ່າກິເລດເປັນເຄື່ອງວັດແທກ ໂທສະຊື່ວ່າກິເລດເປັນເຄື່ອງວັດແທກ ໂມຫະຊື່ວ່າ ກິເລດເປັນເຄື່ອງວັດແທກ ກິເລດເຫຼົ່ານັ້ນພິກຂຸຜູ້ຂີນາສົບລະໄດ້ເດັດຂາດແລ້ວ ຕັດຮາກຖອນໂຄນ ເໝືອນຕົ້ນຕານທີ່ຖືກຕັດຮາກຖອນໂຄນໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ເຈໂຕວິມຸດຕິ ອັນບໍ່ກຳເຣີບ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເລີດກວ່າອັປປະມານາເຈໂຕວິມຸດຕິທີ່ມີຢູ່" ເຈໂຕວິມຸດຕິອັນບໍ່ກຳເຣີບນັ້ນ ວ່າງຈາກຣາຄະ ວ່າງຈາກໂທສະ ວ່າງຈາກໂມຫະ ຣາຄະຊື່ວ່າ ກິເລດເປັນເຄື່ອງກັງວົນ ໂທສະຊື່ວ່າກິເລດເປັນເຄື່ອງກັງວົນ ໂມຫະຊື່ວ່າກິເລດເປັນເຄື່ອງກັງວົນ ກິເລດເຫຼົ່ານັ້ນພິກຂຸຜູ້ຂີນາສົບລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ເຈໂຕວິມຸດຕິອັນບໍ່ກຳເຣີບ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເລີດກວ່າອາກິນຈັນຍາເຈໂຕວິມຸດຕິທີ່ມີຢູ່" ເຈໂຕວິມຸດຕິອັນບໍ່ກຳເຣີບນັ້ນ ວ່າງຈາກຣາຄະ ວ່າງຈາກໂທສະ ວ່າງຈາກໂມຫະ ຣາຄະຊື່ວ່າກິເລດເປັນເຄື່ອງທຳນິມິດ ໂທສະຊື່ວ່າກິເລດເປັນເຄື່ອງທຳນິມິດ ໂມຫະຊື່ວ່າກິເລດເປັນເຄື່ອງທຳນິມິດ ກິເລດເຫຼົ່ານັ້ນ ພິກຂຸຜູ້ຂີນາສົບລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ທ່ານຜູ້ມີອາຍຸ ເຈໂຕວິມຸດຕິອັນບໍ່ກຳເຣີບ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເລີດກວ່າອະນິມິດຕາເຈໂຕວິມຸດຕິທີ່ມີຢູ່" ເຈໂຕວິມຸດຕິອັນບໍ່ກຳເຣີບນັ້ນ ວ່າງຈາກຣາຄະ ວ່າງຈາກໂທສະ ວ່າງຈາກໂມຫະ ຍ້ອນອາໄສເຫດໃດ ທຳເຫຼົ່ານີ້ ຈຶ່ງມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະທີ່ນັ້ນ ເຫດນັ້ນ ເປັນແນວນີ້ແລ"

ເມື່ອທ່ານພຣະສາຣີບຸດໄດ້ກ່າວພາສິດນີ້ແລ້ວ ທ່ານພຣະມະຫາໂກດຖິກະມີໃຈຍິນດີຊົມຊື່ນພາສິດຂອງທ່ານພຣະສາຣີບຸດ ດັ່ງນີ້ແລ

**ມະຫາເວທັນລະສູດທີ ໓ ຈົບ**

# ໔. ຈູລະເວທັນລະສູດ

## ວ່າດ້ວຍການສົນທະນາທຳທີ່ເຮັດໃຫ້ເກີດປັນຍາ ສູດນ້ອຍ

## ສັກກາຍະທິດຖິ

[໔໗໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເວລຸວັນ ກະລັນທະກະນິວາບສະຖານ ເຂດນະຄອນຣາດຊະຄື ຄັ້ງນັ້ນ ອຸປາສົກຊື່ ວິສາຂະ ເຂົ້າໄປຫາພິກຂຸນີຊື່ທຳມະທິນນາເຖິງທີ່ຢູ່ ນ້ອມໄຫວ້ແລ້ວນັ່ງໃນທີ່ສົມຄວນ ແລ້ວໄດ້ຖາມທຳມະທິນນາພິກຂຸນີວ່າ “ພຣະແມ່ເຈົ້າ ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ “ສັກກາຍະ ສັກກາຍະ” ທຳອັນໃດ ທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ “ສັກກາຍະ”

ທຳມະທິນນາ ພິກຂຸນີຕອບວ່າ “ທ່ານວິສາຂະ ອຸປາທານຂັນ໔ ໕ ປະການ ຄື

໑. ຮູປູປາທານະຂັນ (ອຸປາທານຂັນຄືຮູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ທ່ານວິສາຂະ ອຸປາທານຂັນ ໕ ປະການນີ້ ພຣະຜູ້ມີພຣະພາກເຈົ້າ ຕັດຮຽກ ວ່າ “ສັກກາຍະ”

ວິສາຂະອຸປາສົກຊົມຊື່ນ ອະນຸໂມທະນາພາສິດຂອງທຳມະທິນນາພິກຂຸນີວ່າ “ດີແລ້ວພຣະແມ່ເຈົ້າ” ແລ້ວໄດ້ຖາມບັນຫາຕໍ່ໄປວ່າ “ພຣະແມ່ເຈົ້າ ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ “ສັກກາຍະສະມຸໄທ ສັກກາຍະສະມຸໄທ” ທຳອັນໃດ? ທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ “ສັກກາຍະສະມຸໄທ”

“ທ່ານວິສາຂະ ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນ ແລະ ຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ຄື ກາມຕັນຫາ ພະວະຕັນຫາ ວິພະວະຕັນຫານີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກ ວ່າ “ສັກກາຍະສະມຸໄທ”

"ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສັກກາຍະນິໂຣດ ສັກກາຍະນິໂຣດ" ທຳອັນໃດທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ "ສັກກາຍະນິໂຣດ"

"ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫານັ້ນ ນີ້ພຣະຜູ້ມີພຣະພາກເຈົ້າ ຕັດຮຽກວ່າ "ສັກກາຍະນິໂຣດ"

"ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສັກກາຍະນິໂຣທະຄາມິນີປະຕິປະທາ ສັກກາຍະນິໂຣທະຄາມິນີປະຕິປະທາ" ທຳອັນໃດ ທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ "ສັກກາຍະນິໂຣທະຄາມິນີປະຕິປະທາ"

"ອະຣິຍະມັກມີອົງ ໘ ໄດ້ແກ່

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ຄິດຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການງານຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ນີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ "ສັກກາຍະນິໂຣທະຄາມິນີປະຕິປະທາ"

"ພຣະແມ່ເຈົ້າ ຂ້ານ້ອຍ ອຸປາທານກັບອຸປາທານຂັນ ໕ ເປັນອັນດຽວກັນ ຫຼື ຕ່າງກັນ?"

"ທ່ານວິສາຂະ ອຸປາທານກັບອຸປາທານຂັນ ໕ ທັງບໍ່ເປັນອັນດຽວກັນ ທັງບໍ່ຕ່າງກັນ ຄວາມກຳໜັດພໍໃຈໃນອຸປາທານຂັນ ໕ ກໍຄືອຸປາທານນັ້ນເອງ"

[໔໖໑] "ພຣະແມ່ເຈົ້າ ຂ້ານ້ອຍ ສັກກາຍະທິດຖິມີໄດ້ແນວໃດ?"

"ທ່ານວິສາຂະ ປຸຖຸຊົນໃນໂລກນີ້ຜູ້ຍັງບໍ່ໄດ້ສະດັບ ບໍ່ໄດ້ພົບພຣະອະຣິຍະທັງຫຼາຍ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບຄຳແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ພົບສັດຕະບຸຣຸດທັງຫຼາຍ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບຄຳແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາວ່າມີຮູບແດ່ ພິຈາລະນາເຫັນອົງໃນອັດຕາແດ່ ພິຈາລະນາເຫັນອັດຕາໃນຮູບແດ່ ພິຈາລະນາເຫັນເວທະນາ ຯລຯ ພິຈາລະນາເຫັນສັນຍາ ຯລຯ ພິຈາລະນາເຫັນສັງຂານທັງຫຼາຍ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາວ່າມີວິນຍານແດ່ ພິຈາລະນາເຫັນວິນຍານໃນອັດຕາແດ່ ພິຈາລະນາເຫັນອັດຕາໃນວິນຍານແດ່ ສັກກາຍະທິດຖິມີໄດ້ແນວນີ້ແລ"

"ພຣະແມ່ເຈົ້າ ຂ້ານ້ອຍ ສັກກາຍະທິດຖິບໍ່ມີໄດ້ແນວໃດ?"

"ທ່ານວິສາຂະ ພຣະອະຣິຍະສາວົກໃນພຣະທຳວິໄນນີ້ຜູ້ໄດ້ສະດັບແລ້ວ ໄດ້ພົບພຣະອະຣິຍະທັງຫຼາຍ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບຄຳແນະນຳດີແລ້ວໃນທຳຂອງພຣະອະຣິຍະ ພົບສັດຕະບຸຣຸດທັງຫຼາຍ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບຄຳແນະນຳດີແລ້ວໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນອົງໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາວ່າມີຮູບແດ່ ບໍ່ພິຈາລະນາເຫັນອົງໃນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາວ່າມີຮູບແດ່ ບໍ່ພິຈາລະນາເຫັນເວທະນາ ฯລฯ ບໍ່ພິຈາລະນາເຫັນສັນຍາ ฯລฯ ບໍ່ພິຈາລະນາເຫັນສັງຂານທັງຫຼາຍ ฯລฯ ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານແດ່ ບໍ່ພິຈາລະນາເຫັນວິນຍານໃນອັດຕາແດ່ ບໍ່ພິຈາລະນາເຫັນອັດຕາໃນວິນຍານແດ່ ສັກກາຍະທິດຖິບໍ່ມີໄດ້ ແນວນີ້ແລ"

## ມັກມີອົງ ໘ ກັບຂັນ ໓

[໔໖໘] "ພຣະແມ່ເຈົ້າ ຂ້ານ້ອຍ ອະຣິຍະມັກມີອົງ ໘ ເປັນແນວໃດ?"

"ທ່ານວິສາຂະ ອະຣິຍະມັກມີອົງ ໘ ນີ້ ຄື

| | |
|---|---|
| ໑. ສຳມາທິດຖິ | ໒. ສຳມາສັງກັບປະ |
| ໓. ສຳມາວາຈາ | ໔. ສຳມາກຳມັນຕະ |
| ໕. ສຳມາອາຊີວະ | ໖. ສຳມາວາຍາມະ |
| ໗. ສຳມາສະຕິ | ໘. ສຳມາສະມາທິ" |

"ອະຣິຍະມັກມີອົງ ໘ ເປັນສັງຂະຕະທຳ໋ ຫຼື ເປັນອະສັງຂະຕະທຳ໌"

"ອະຣິຍະມັກມີອົງ ໘ ເປັນສັງຂະຕະທຳ"

"ພຣະຜູ້ມີພຣະພາກເຈົ້າຊົງຈັດຂັນ ໓ ປະການ ເຂົ້າໃນອະຣິຍະມັກມີອົງ ໘ ຫຼື ວ່າ ຊົງຈັດອະຣິຍະມັກມີອົງ ໘ ເຂົ້າໃນຂັນ ໓ ປະການ"

"ພຣະຜູ້ມີພຣະພາກເຈົ້າບໍ່ຊົງຈັດຂັນ ໓ ປະການ ເຂົ້າໃນອະຣິຍະມັກມີອົງ ໘ ແຕ່ຊົງຈັດອະຣິຍະມັກມີອົງ ໘ ເຂົ້າໃນຂັນ ໓ ປະການ ຄື

໑. ສຳມາວາຈາ ສຳມາກຳມັນຕະ ແລະ ສຳມາອາຊີວະ ຊົງຈັດເຂົ້າໃນສີນຂັນ
໒. ສຳມາວາຍາມະ ສຳມາສະຕິ ແລະ ສຳມາສະມາທິ ຊົງຈັດເຂົ້າໃນສະມາທິຂັນ
໓. ສຳມາທິດຖິ ແລະ ສຳມາສັງກັບປະ ຊົງຈັດເຂົ້າໃນປັນຍາຂັນ"

## ສະມາທິແລະສັງຂານ

"ພຣະແມ່ເຈົ້າ ຂ້ານ້ອຍ ທຳຊະນິດໃດເປັນສະມາທິ ທຳເຫຼົ່າໃດເປັນນິມິດຂອງສະມາທິ ທຳເຫຼົ່າໃດເປັນເຄື່ອງອຸດໜຸນສະມາທິ ການຈະເລີນສະມາທິ ເປັນແນວໃດ?"

"ທ່ານວິສາຂະ ຄວາມທີ່ຈິດມີອາລົມເປັນໜຶ່ງເປັນສະມາທິ ສະຕິປັດຖານ ໔ ເປັນນິມິດຂອງສະມາທິ ສັມມັບປະທານ ໔ ເປັນເຄື່ອງອຸດໜຸນສະມາທິ ການເສບ[໑] ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງທຳເຫຼົ່ານັ້ນ ເປັນການຈະເລີນສະມາທິ"

[໔໗໓] "ພຣະແມ່ເຈົ້າ ຂ້ານ້ອຍ ສັງຂານມີທໍ່ໃດ?"

"ທ່ານວິສາຂະ ສັງຂານມີ ໓ ປະການ ຄື (໑) ກາຍສັງຂານ (໒) ວະຈີສັງຂານ (໓) ຈິດຕະສັງຂານ"

"ກໍກາຍສັງຂານເປັນແນວໃດ? ວະຈີສັງຂານເປັນແນວໃດ? ຈິດຕະສັງຂານເປັນແນວໃດ?"

"ລົມອັດສາສະ (ລົມຫັນໃຈເຂົ້າ) ແລະລົມປັດສາສະ (ລົມຫັນໃຈອອກ) ເປັນກາຍສັງຂານ ວິຕົກແລະວິຈານເປັນວະຈີສັງຂານ ສັນຍາແລະເວທະນາເປັນຈິດຕະສັງຂານ"

"ພຣະແມ່ເຈົ້າ ຂ້ານ້ອຍ ຍ້ອນເຫດໃດ ລົມອັດສາສະແລະລົມປັດສາສະຈຶ່ງເປັນກາຍສັງຂານ ວິຕົກແລະວິຈານຈຶ່ງເປັນວະຈີສັງຂານ ສັນຍາແລະເວທະນາຈຶ່ງເປັນຈິດຕະສັງຂານ"

"ທ່ານວິສາຂະ ລົມອັດສາສະແລະລົມປັດສາສະເຫຼົ່ານີ້ເປັນທຳທີ່ມີຢູ່ຄູ່ກາຍ ເນື່ອງກັບກາຍ ສັນນັ້ນ ລົມອັດສາສະແລະລົມປັດສາສະຈຶ່ງເປັນກາຍສັງຂານ ບຸກຄົນນຶກແລະຕອງ ກ່ອນແລ້ວຈຶ່ງເປ່ງວາຈາ ສະນັ້ນ ວິຕົກແລະວິຈານຈຶ່ງເປັນວະຈີສັງຂານ ສັນຍາແລະເວທະນາເປັນທຳທີ່ມີຢູ່ຄູ່ຈິດ ເນື່ອງກັບຈິດ ສັນນັ້ນ ສັນຍາແລະເວທະນາຈຶ່ງເປັນຈິດຕະສັງຂານ"

## ສັນຍາເວທະຍິຕະນິໂຣດ

[໔໗໔] "ພຣະແມ່ເຈົ້າ ຂ້ານ້ອຍ ການເຂົ້າສັນຍາເວທະຍິຕະນິໂຣດ ເປັນແນວໃດ?"

"ທ່ານວິສາຂະ ພິກຂຸຜູ້ເຂົ້າສັນຍາເວທະຍິຕະນິໂຣດ ບໍ່ໄດ້ມີຄວາມຄິດແນວນີ້ວ່າ "ເຮົາຈັກເຂົ້າສັນຍາເວທະຍິຕະນິໂຣດ ເຮົາກຳລັງເຂົ້າສັນຍາເວທະຍິຕະນິໂຣດ ຫຼື ເຮົາເຂົ້າສັນຍາເວທະຍິຕະນິໂຣດແລ້ວ" ແທ້ທີ່ຈິງ ຈິດທີ່ທ່ານອົບຮົມໄວ້ໃນເບື້ອງຕົ້ນແນວນັ້ນ ຍ່ອມນຳເຂົ້າໄປໃນພາວະນັ້ນໄດ້ເອງ"

"ເມື່ອພິກຂຸເຂົ້າສັນຍາເວທະຍິຕະນິໂຣດ ທຳເຫຼົ່າໃດທີ່ດັບໄປກ່ອນ ກາຍສັງຂານ ວະຈີສັງຂານ ຫຼື ຈິດຕະສັງຂານ"

"ເມື່ອພິກຂຸເຂົ້າສັນຍາເວທະຍິຕະນິໂຣດ ວະຈີສັງຂານດັບໄປກ່ອນ ຈາກນັ້ນ ກາຍສັງຂານຈຶ່ງດັບ ສ່ວນຈິດຕະສັງຂານດັບພາຍຫຼັງ"

"ການອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ເປັນແນວໃດ?"

"ພິກຂຸ ຜູ້ອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ບໍ່ໄດ້ມີຄວາມຄິດແນວນີ້ວ່າ "ເຮົາຈັກອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ເຮົາກຳລັງອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ຫຼື ເຮົາອອກຈາກສັນຍາເວທະຍິຕະນິໂຣດສະມາບັດແລ້ວ" ແທ້ທີ່ຈິງ ຈິດທີ່ທ່ານອົບຮົມໄວ້ໃນເບື້ອງຕົ້ນຢ່າງນັ້ນ ຍ່ອມນຳເຂົ້າໄປໃນພາວະນັ້ນໄດ້ເອງ"

"ເມື່ອພິກຂຸອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ທຳເຫຼົ່າໃດເກີດຂຶ້ນກ່ອນ ກາຍສັງຂານ ວະຈີສັງຂານ ຫຼື ຈິດຕະສັງຂານ"

"ເມື່ອພິກຂຸອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ຈິດຕະສັງຂານເກີດຂຶ້ນກ່ອນ ຈາກນັ້ນ ກາຍສັງຂານກໍເກີດຂຶ້ນ ສ່ວນວະຈີສັງຂານເກີດຂຶ້ນພາຍຫຼັງ"

"ຜັດສະທໍ່ໃດ ຍ່ອມຖືກຕ້ອງພິກຂຸຜູ້ອອກຈາກສັນຍາເວທະຍິຕະນິໂຣດສະມາບັດ"

"ຜັດສະ ໓ ຢ່າງ ຄື (໑) ຜັດສະຊື່ ສູນຍະຕະ (ວ່າງ) (໒) ຜັດສະຊື່ ອະນິມິດຕະ (ບໍ່ມີນິມິດ) (໓) ຜັດສະຊື່ ອັບປະນິຫິຕະ (ບໍ່ມີບ່ອນຕັ້ງ) ຍ່ອມຖືກຕ້ອງພິກຂຸຜູ້ອອກຈາກສັນຍາເວທະຍິຕະນິໂຣດສະມາບັດ"

"ພຣະແມ່ເຈົ້າ ຂ້ານ້ອຍ ພິກຂຸຜູ້ອອກແລ້ວຈາກສັນຍາເວທະຍິຕະນິໂຣດສະມາບັດມີຈິດນ້ອມໄປໃນທຳອັນໃດ ອຽງໄປໃນທຳອັນໃດ ແລະ ໂອນໄປໃນທຳອັນໃດ?"

"ທ່ານວິສາຂະ ພິກຂຸຜູ້ອອກແລ້ວຈາກສັນຍາເວທະຍິຕະນິໂຣດສະມາບັດ ມີຈິດນ້ອມໄປໃນວິເວກ ອຽງໄປໃນວິເວກ ໂອນໄປໃນວິເວກ"

## ເວທະນາ

[໔໗໕] "ພຣະແມ່ເຈົ້າ ຂ້ານ້ອຍ ເວທະນາມີທໍ່ໃດ?"

"ທ່ານວິສາຂະ ເວທະນາມີ ໓ ປະການ ຄື (໑) ສຸກເວທະນາ (໒) ທຸກຂະເວທະນາ (໓)

ອະທຸກຂະມະສຸຂະເວທະນາ"

"ສຸກເວທະນາເປັນແນວໃດ? ທຸກຂະເວທະນາເປັນແນວໃດ? ອະທຸກຂະມະສຸຂະເວທະນາເປັນແນວໃດ?"

"ການສະເຫວີຍອາລົມທີ່ເປັນສຸກ ຄວາມສະບາຍທາງກາຍ ຫຼື ທາງໃຈ ນີ້ເປັນສຸກເວທະນາ ການສະເຫວີຍອາລົມທີ່ເປັນທຸກ ບໍ່ສຸກສະບາຍທາງກາຍ ຫຼື ທາງໃຈ ນີ້ເປັນທຸກຂະເວທະນາ ການສະເຫວີຍອາລົມທີ່ບໍ່ແມ່ນຄວາມສຸກສະບາຍ ແລະ ທີ່ບໍ່ແມ່ນຄວາມບໍ່ສຸກສະບາຍທາງກາຍຫຼືທາງໃຈ ນີ້ເປັນອະທຸກຂະມະສຸຂະເວທະນາ"

"ສຸກເວທະນາເປັນສຸກຍ້ອນອັນໃດ ເປັນທຸກຍ້ອນອັນໃດ ທຸກຂະເວທະນາເປັນສຸກຍ້ອນອັນໃດ ເປັນທຸກຍ້ອນອັນໃດ ອະທຸກຂະມະສຸຂະເວທະນາເປັນສຸກຍ້ອນອັນໃດ ເປັນທຸກຍ້ອນອັນໃດ?"

"ສຸກເວທະນາເປັນສຸກຍ້ອນຕັ້ງຢູ່ ເປັນທຸກຍ້ອນປ່ຽນໄປ ທຸກຂະເວທະນາເປັນທຸກຍ້ອນຕັ້ງຢູ່ ເປັນສຸກຍ້ອນປ່ຽນໄປ ອະທຸກຂະມະສຸຂະເວທະນາເປັນສຸກຍ້ອນຮູ້ ເປັນທຸກຍ້ອນບໍ່ຮູ້"

"ອະນຸໄສຊະນິດໃດນອນຈົມຢູ່ໃນສຸກເວທະນາ ອະນຸໄສຊະນິດໃດນອນຈົມຢູ່ໃນທຸກຂະເວທະນາ ອະນຸໄສຊະນິດໃດນອນຈົມຢູ່ໃນອະທຸກຂະມະສຸຂະເວທະນາ"

"ຣາຄານຸໄສ (ກິເລດທີ່ນອນເນື່ອງຄືຄວາມກຳໜັດ) ນອນຈົມຢູ່ໃນສຸກເວທະນາ ປະຕິຄານຸໄສ (ກິເລດທີ່ນອນຈົມຄືຄວາມຂັດເຄືອງ) ນອນຈົມຢູ່ໃນທຸກຂະເວທະນາ

ອະວິດຊານຸໄສ (ກິເລດທີ່ນອນຈົມຄືຄວາມບໍ່ຮູ້ຈິງ) ນອນຈົມຢູ່ໃນອະທຸກຂະມະສຸຂະເວທະນາ"

"ຣາຄານຸໄສນອນຈົມຢູ່ໃນສຸກເວທະນາທັງໝົດ ຫຼື ປະຕິຄານຸໄສນອນຈົມຢູ່ໃນທຸກຂະເວທະນາທັງໝົດ ຫຼື ອະວິດຊານຸໄສນອນຈົມຢູ່ໃນອະທຸກຂະມະສຸຂະເວທະນາທັງໝົດແມ່ນບໍ?"

"ຣາຄານຸໄສນອນຈົມຢູ່ໃນສຸກເວທະນາທັງໝົດຫາບໍ່ໄດ້ ປະຕິຄານຸໄສນອນຈົມຢູ່ໃນທຸກຂະເວທະນາທັງໝົດຫາບໍ່ໄດ້ ອະວິດຊານຸໄສນອນຈົມຢູ່ໃນອະທຸກຂະມະສຸຂະເວທະນາທັງໝົດຫາບໍ່ໄດ້"

"ທຳອັນໃດ ຈະເພິ່ງລະໄດ້ໃນສຸກເວທະນາ ທຳອັນໃດ ຈະເພິ່ງລະໄດ້ໃນທຸກຂະເວທະນາ ທຳອັນໃດຈະ ເພິ່ງລະໄດ້ໃນອະທຸກຂະມະສຸຂະເວທະນາ"

“ຣາຄານຸໄສຈະເພິ່ງລະໄດ້ໃນສຸກເວທະນາ ປະຕິຄານຸໄສຈະເພິ່ງລະໄດ້ໃນທຸກຂະເວທະນາ ອະວິດຊານຸໄສຈະ ເພິ່ງລະໄດ້ໃນອະທຸກຂະມະສຸຂະເວທະນາ”

“ພຣະແມ່ເຈົ້າ ຂ້ານ້ອຍ ຣາຄານຸໄສຈະເພິ່ງລະໄດ້ໃນສຸກເວທະນາທັງໝົດ ຫຼື ປະຕິຄານຸໄສຈະເພິ່ງລະໄດ້ໃນທຸກຂະເວທະນາທັງໝົດ ຫຼື ອະວິດຊານຸໄສຈະເພິ່ງລະໄດ້ໃນອະທຸກຂະມະສຸຂະເວທະນາທັງໝົດແມ່ນບໍ?”

“ທ່ານວິສາຂະ ຣາຄານຸໄສຈະເພິ່ງລະໄດ້ໃນສຸກເວທະນາທັງໝົດຫາບໍ່ໄດ້ ປະຕິຄານຸໄສຈະເພິ່ງລະໄດ້ໃນທຸກຂະເວທະນາທັງໝົດຫາບໍ່ໄດ້ ອະວິດຊານຸໄສຈະເພິ່ງລະໄດ້ໃນອະທຸກຂະມະສຸຂະເວທະນາທັງໝົດຫາບໍ່ໄດ້ ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ຍ່ອມລະຣາຄະໄດ້ດ້ວຍປະຖົມຊານນັ້ນ ຣາຄານຸໄສບໍ່ໄດ້ນອນຈົມຢູ່ໃນປະຖົມຊານນັ້ນ

ອັນໜຶ່ງ ພິກຂຸໃນພຣະທຳວິໄນນີ້ ພິຈາລະນາເຫັນຢູ່ວ່າ “ເມື່ອໃດ ເຮົາຈະໄດ້ບັນລຸອາຍະຕະນະ ທີ່ພຣະອະຣິຍະທັງຫຼາຍບັນລຸແລ້ວ ດຳລົງຢູ່ໃນບັດນີ້” ເມື່ອພິກຂຸນັ້ນ ຕັ້ງຄວາມປາຖະໜາໃນວິໂມກທັງຫຼາຍ ອັນເປັນອະນຸດຕະຣທຳຢ່າງນີ້ ໂທມະນັດຍ່ອມເກີດຂຶ້ນ ຍ້ອນຄວາມປາຖະໜາເປັນປັດໄຈ ທ່ານລະປະຕິຄະໄດ້ດ້ວຍໂທມະນັດນັ້ນ ປະຕິຄານຸໄສບໍ່ໄດ້ນອນຈົມຢູ່ໃນໂທມະນັດນັ້ນ ອັນໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນແລ້ວ ພິກຂຸໃນພຣະທຳວິໄນນີ້ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ຍ່ອມລະອະວິດຊາໄດ້ດ້ວຍຈະຕຸດຖະຊານນັ້ນ ອະວິດຊານຸໄສບໍ່ໄດ້ນອນຈົມຢູ່ໃນຈະຕຸດຖະຊານນັ້ນ”

[໔໙໖] “ພຣະແມ່ເຈົ້າ ຂ້ານ້ອຍ ອັນໃດ? ເປັນຄູ່ປຽບແຫ່ງສຸກເວທະນາ”

“ທ່ານວິສາຂະ ທຸກຂະເວທະນາເປັນຄູ່ປຽບແຫ່ງສຸກເວທະນາ”

“ອັນໃດ? ເປັນຄູ່ປຽບແຫ່ງ ທຸກຂະເວທະນາ”

“ສຸກເວທະນາ ເປັນຄູ່ປຽບແຫ່ງ ທຸກຂະເວທະນາ”

“ອັນໃດ? ເປັນຄູ່ປຽບແຫ່ງ ອະທຸກຂະມະສຸຂະເວທະນາ”

“ອະວິດຊາ ເປັນຄູ່ປຽບແຫ່ງ ອະທຸກຂະມະສຸຂະເວທະນາ”

“ອັນໃດ? ເປັນຄູ່ປຽບແຫ່ງ ອະວິດຊາ”

“ວິດຊາ ເປັນຄູ່ປຽບແຫ່ງ ອະວິດຊາ”

“ອັນໃດ? ເປັນຄູ່ປຽບແຫ່ງ ວິດຊາ”

“ວິມຸດຕິ ເປັນຄູ່ປຽບແຫ່ງ ວິດຊາ”

“ອັນໃດ? ເປັນຄູ່ປຽບແຫ່ງ ວິມຸດຕິ”

"ນິບພານ ເປັນຄູ່ປຽບແຫ່ງ ວິມຸດຕິ"
"ພຣະແມ່ເຈົ້າ ຂ້ານ້ອຍ ອັນໃດເປັນຄູ່ປຽບແຫ່ງນິບພານ"

"ທ່ານວິສາຂະ ທ່ານກ້າວເລີຍບັນຫາໄປເສຍແລ້ວ ບໍ່ອາດກຳນົດທີ່ສຸດແຫ່ງບັນຫາໄດ້ ຍ້ອນພົມມະຈັນມີນິບພານເປັນທີ່ຢັ່ງລົງ ມີນິບພານເປັນຈຸດໝາຍ ມີນິບພານເປັນທີ່ສຸດ ຖ້າທ່ານຍັງຫວັງຢູ່ກໍຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ທູນຖາມເນື້ອຄວາມນີ້ເທີ້ນ ພຣະຜູ້ມີພຣະພາກເຈົ້າຊົງຕອບແກ່ທ່ານຢ່າງໃດ ທ່ານຄວນຊົງຈຳຄຳຕອບໄວ້ຢ່າງນັ້ນເທີ້ນ"

## ຊົງສັນເສີນທຳມະທິນນາພິກຂຸນີ

[໔໖໗] ລຳດັບນັ້ນ ວິສາຂະອຸປາສົກຊົມຊື່ນອະນຸໂມທະນາພາສິດຂອງທຳມະທິນນາພິກຂຸນີແລ້ວ ລຸກຈາກອາສະນະ ນ້ອມໄຫວ້ທຳມະທິນນາພິກຂຸນີທຳປະທັກສິນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງໃນທີ່ສົມຄວນ ໄດ້ຂາບທູນຖາມເລື້ອງທີ່ຕົນສົນທະນາທຳມີກະຖາກັບທຳມະທິນນາພິກຂຸນີໃຫ້ຊົງຮູ້ທຸກປະການ

ເມື່ອວິສາຂະອຸປາສົກຂາບທູນຢ່າງນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດວ່າ "ວິສາຂະທຳມະທິນນາພິກຂຸນີເປັນບັນດິດ ມີປັນຍາຫຼາຍ ຫາກທ່ານຈະເພິ່ງສອບຖາມເນື້ອຄວາມນັ້ນກັບເຮົາ ແມ່ນເຮົາກໍຈະເພິ່ງຕອບເນື້ອຄວາມນັ້ນ ເໝືອນຢ່າງທີ່ທຳມະທິນນາພິກຂຸນີຕອບແລ້ວ ເນື້ອຄວາມແຫ່ງຄຳຕອບນັ້ນເປັນດັ່ງນັ້ນແລ ທ່ານຄວນຊົງຈຳໄວ້ຢ່າງນັ້ນເທີ້ນ"

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ວິສາຂະອຸປາສົກມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະເວທັນລະສູດທີ ໔ ຈົບ**

# ໕. ຈູລະທຳທະສະມາທານສູດ

## ວ່າດ້ວຍການສະມາທານທຳ⁰ສູດນ້ອຍ

[໔໗໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກ

ພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ການສະມາທານທຳ ໔ ປະການນີ້

ການສະມາທານທຳ ໔ ປະການ ອັນໃດແນ? ຄື

໑. ການສະມາທານທຳທີ່ມີສຸກໃນປັດຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ
໒. ການສະມາທານທຳທີ່ມີທຸກໃນປັດຈຸບັນ ແລະ ມີທຸກເປັນວິບາກໃນອະນາຄົດ
໓. ການສະມາທານທຳທີ່ມີທຸກໃນປັດຈຸບັນ ແຕ່ມີສຸກເປັນວິບາກໃນອະນາຄົດ
໔. ການສະມາທານທຳທີ່ມີສຸກໃນປັດຈຸບັນ ແລະ ມີສຸກເປັນວິບາກໃນອະນາຄົດ

## ການສະມາທານທຳທີ່ມີສຸກແຕ່ມີທຸກເປັນວິບາກ

[໔໗໙] ການສະມາທານທຳທີ່ມີສຸກໃນປັດຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ ເປັນແນວໃດ?

ຄື ມີສະມະນະພາມພວກໜຶ່ງຜູ້ມີວາທະຢ່າງນີ້ ມີທິດຖິແນວນີ້ວ່າ "ໂທດໃນການທັງຫຼາຍບໍ່ມີ" ສະມະນະພາມພວກນັ້ນ ຍ່ອມເຖິງຄວາມເປັນຜູ້ດື່ມໃນການທັງຫຼາຍ ປິນເປີກັບພວກນາງປະຣິພາຊິກາທີ່ຫົວມວຍຜົມແລະກ່າວແນວນີ້ວ່າ "ເປັນຫຍັງ ທ່ານສະມະນະພາມພວກນັ້ນເມື່ອເຫັນອະນາຄົດໄພໃນການທັງຫຼາຍ ຈຶ່ງກ່າວເຖິງການລະການທັງຫຼາຍ ບັນຍັດການກຳນົດຮູ້ການທັງຫຼາຍ (ແທ້ຈິງແລ້ວ) ການໄດ້ສຳຜັດແຂນອັນມີຂົນອ່ອນນຸ່ມຂອງນາງປະຣິພາຊິການີ້ເປັນຄວາມສຸກ" ແລ້ວກໍຄວນເຖິງຄວາມເປັນຜູ້ດື່ມໃນການທັງຫຼາຍ ເມື່ອເຖິງຄວາມເປັນຜູ້ດື່ມໃນການທັງຫຼາຍ ຫຼັງຈາກຕາຍແລ້ວ ໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ສະເຫວີຍທຸກຂະເວທະນາອັນແຮງກ້າເຜັດຮ້ອນ ໃນບ່ອນທີ່ຕົນເກີດນັ້ນ ແລະ ກ່າວແນວນີ້ວ່າ "ທ່ານສະມະນະພາມພວກນັ້ນ ເມື່ອເຫັນອະນາຄົດໄພໃນການທັງຫຼາຍນີ້ແລ ຈຶ່ງກ່າວເຖິງການລະການທັງຫຼາຍ ບັນຍັດການກຳນົດຮູ້ການທັງຫຼາຍ ແທ້ຈິງແລ້ວ ພວກເຮົານີ້ຍ່ອມສະເຫວີຍທຸກຂະເວທະນາອັນແຮງກ້າເຜັດຮ້ອນ ຍ້ອນການເປັນເຫດ ຍ້ອນການເປັນຕົ້ນເຫດ"

ປຽບເໝືອນ ໝາກສຸກຂອງເຄືອຍ່ານຊາຍ ຈະເພິ່ງແຕກໃນເດືອນທ້າຍແຫ່ງລະດູຮ້ອນ ພືດແຫ່ງເຄືອຍ່ານຊາຍນັ້ນ ຈະເພິ່ງຕົກລົງທີ່ເຫງົ້າຕົ້ນສາລະຕົ້ນໃດຕົ້ນໜຶ່ງ ເຮັດໃຫ້ເທວະດາທີ່ສິງຢູ່ທີ່ຕົ້ນສາລະນັ້ນ ມີຄວາມຢ້ານ ຫວາດສຽວ ແລະ ເຖິງຄວາມສະດຸ້ງ

ພວກອາຣາມເທວະດາ[1] ວະນະເທວະດາ[2] ຣຸກຂະເທວະດາ[3] ແລະ ພວກເທວະດາທີ່ສິງຢູ່ທີ່ຕົ້ນໄມ້ ອັນເປັນໂອສົດ ຫຍ້າແລະຕົ້ນໄມ້ເຈົ້າປ່າ ຜູ້ເປັນມິດອຳມາດ ຍາດສາໂລຫິດ[4] ຂອງ

ເທວະດາທີ່ສິງຢູ່ທີ່ຕົ້ນສາລະນັ້ນ ຕ່າງກໍພາກັນມາປອບໂຍນແນວນີ້ວ່າ "ທ່ານຜູ້ຈະເລີນ ຢ່າຢ້ານເລີຍ ທ່ານຜູ້ຈະເລີນ ຢ່າຢ້ານເລີຍ ເມັດພືດແຫ່ງເຄືອຢ່ານຊາຍນັ້ນ ບາງເທື່ອນົກຍູງອາດກັນກິນແດ່ ເນື້ອອາດຫຍໍ້າກິນແດ່ ໄຟປ່າອາດໄໝ້ແດ່ ພວກຄົນທຳງານໃນປ່າອາດລົກອອກແດ່ ປວກອາດກັດກິນແດ່ ຫຼື ບໍ່ງອກຂຶ້ນອີກ"

ແຕ່ເມັດພືດແຫ່ງເຄືອຢ່ານຊາຍນັ້ນ ນົກຍູງກໍບໍ່ກັດນກິນ ເນື້ອກໍບໍ່ຫຍໍ້າກິນ ໄຟປ່າກໍບໍ່ໄໝ້ ພວກຄົນທຳງານໃນປ່າກໍບໍ່ລົກອອກ ປວກກໍບໍ່ກັດກິນ ຍັງຄົງເປັນພືດຕໍ່ໄປ ເມື່ອຖືກເມກຝົນຕົກໃສ່ແລ້ວ ກໍງອກຂຶ້ນມາໃໝ່ ເປັນເຄືອຢ່ານຊາຍນ້ອຍແລະອ່ອນມີຍອຍຫ້ອຍ ຍ້ອຍເຂົ້າໄປອາໄສຕົ້ນສາລະ"

ເທວະດາທີ່ສິງຢູ່ທີ່ຕົ້ນສາລະນັ້ນ ຈຶ່ງກ່າວວ່າ "ເປັນຫຍັງ ພວກທ່ານອາຣາມເທວະດາ ວະນະເທວະດາ ຣຸກຂະເທວະດາ ແລະ ເທວະດາທີ່ສິງຢູ່ທີ່ຕົ້ນໄມ້ອັນເປັນໂອສົດຫຍ້າແລະຕົ້ນໄມ້ເຈົ້າປ່າ ຜູ້ເປັນມິດ ອຳມາດ ຍາດສາໂລຫິດເມື່ອເຫັນອະນາຄົດໄພໃນເມັດພືດແຫ່ງເຄືອຢ່ານຊາຍຈຶ່ງພາກັນມາປອບໂຍນແນວນີ້ວ່າ "ທ່ານຜູ້ຈະເລີນ ຢ່າຢ້ານເລີຍ ທ່ານຜູ້ຈະເລີນ ຢ່າຢ້ານເລີຍ ເມັດພືດແຫ່ງເຄືອຢ່ານຊາຍນັ້ນ ບາງເທື່ອນົກຍູງອາດກືນກິນແດ່ ເນື້ອອາດຫຍໍ້າກິນແດ່ ໄຟປ່າອາດໄໝ້ແດ່ ພວກຄົນທຳງານໃນປ່າອາດລົກແດ່ ປວກອາດກັດກິນແດ່ ຫຼື ບໍ່ງອກຂຶ້ນອີກ" ເຄືອຢ່ານຊາຍນີ້ ນ້ອຍແລະອ່ອນມີຍອຍຫ້ອຍຍ້ອຍຢູ່ ມີສຳຜັດອັນນຳຄວາມສຸກມາໃຫ້ ເຄືອຢ່ານຊາຍນັ້ນ ເລືອພັນຕົ້ນສາລະນັ້ນ ເມື່ອເລືອພັນແລ້ວ ຕັ້ງຢູ່ທາງເທິງເໝືອນຄັນຮົ່ມ ແຕກເຄືອຢູ່ທາງລຸ່ມ ທຳລາຍລຳຕົ້ນໃຫຍ່ ໆ ຂອງຕົ້ນສາລະນັ້ນສາ

ເທວະດາທີ່ສິງຢູ່ທີ່ຕົ້ນສາລະນັ້ນກ່າວແນວນີ້ວ່າ "ພວກທ່ານອາຣາມເທວະດາ ວະນະເທວະດາ ຣຸກຂະເທວະດາ ແລະ ພວກເທວະດາທີ່ສິງຢູ່ທີ່ຕົ້ນໄມ້ອັນເປັນໂອສົດຫຍ້າ ແລະ ຕົ້ນໄມ້ເຈົ້າປ່າ ຜູ້ເປັນມິດອຳມາດ ຍາດສາໂລຫິດ ເມື່ອເຫັນອະນາຄົດໄພ ໃນເມັດພືດແຫ່ງເຄືອຢ່ານຊາຍນີ້ ຈຶ່ງພາກັນມາປອບໂຍນແນວນີ້ວ່າ "ທ່ານຜູ້ຈະເລີນ ຢ່າຢ້ານເລີຍ ທ່ານຜູ້ຈະເລີນ ຢ່າຢ້ານເລີຍ ເມັດພືດແຫ່ງເຄືອຢ່ານຊາຍນັ້ນ ບາງເທື່ອນົກຍູງອາດກືນກິນແດ່ ເນື້ອອາດຫຍໍ້າກິນແດ່ ໄຟປ່າ ອາດໄໝ້ແດ່ ພວກຄົນທຳງານໃນປ່າອາດລົກແດ່ ປວກອາດກັດກິນແດ່ ຫຼື ບໍ່ງອກຂຶ້ນອີກ" ເຮົານັ້ນ ສະເຫວີຍທຸກຂະເວທະນາອັນແຮງກ້າ ເຜັດຮ້ອນ ຍ້ອນພືດແຫ່ງເຄືອຢ່ານຊາຍເປັນເຫດ" ແມ່ນສັນໃດ

ມີສະມະນະພາມພວກໜຶ່ງ ມີວາທະຢ່າງນີ້ ມີທິດຖິແນວນີ້ວ່າ "ໂທດໃນກາມທັງຫຼາຍບໍ່ມີ" ກໍຄືກັນສັນນັ້ນ ສະມະນະພາມເຫຼົ່ານັ້ນຍ່ອມເຖິງຄວາມເປັນຜູ້ດື່ມໃນກາມທັງຫຼາຍ ປົນເປກັບພວກນາງປະຣິພາຊິກາທີ່ເກົ້າຜົມແລະກ່າວແນວນີ້ວ່າ "ເປັນຫຍັງ ທ່ານສະມະນະພາມພວກນັ້ນ ເມື່ອເຫັນອະນາຄົດໄພໃນກາມທັງຫຼາຍ ຈຶ່ງກ່າວເຖິງການລະກາມທັງຫຼາຍ ບັນຍັດການກຳນົດຮູ້ໃນ

ກາມທັງຫຼາຍ (ອັນແທ້ຈິງ) ການສຳຜັດແຂນອັນມີຂົນອ່ອນນຸ່ມຂອງນາງປະຣິພາຊິການີ້ ເປັນຄວາມສຸກ" ຍ່ອມເຖິງຄວາມເປັນຜູ້ດື່ມໃນກາມທັງຫຼາຍ ເມື່ອເຖິງຄວາມເປັນຜູ້ດື່ມໃນກາມທັງຫຼາຍ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ສະເຫວີຍທຸກຂະເວທະນາອັນແຮງກ້າເຜັດຮ້ອນໃນບ່ອນທີ່ຕົນເກີດນັ້ນ ແລະ ກ່າວແນວນີ້ວ່າ "ທ່ານສະມະນະພາມພວກນັ້ນ ເມື່ອເຫັນອະນາຄົດໄພໃນກາມທັງຫຼາຍນີ້ແລ ຈຶ່ງກ່າວເຖິງການລະກາມທັງຫຼາຍ ບັນຍັດຄວາມກຳນົດຮູ້ກາມທັງຫຼາຍ ແທ້ຈິງແລ້ວ ພວກເຮົານີ້ ຍ່ອມສະເຫວີຍທຸກຂະເວທະນາອັນແຮງກ້າເຜັດຮ້ອນຍ້ອນກາມເປັນເຫດ ຍ້ອນກາມເປັນຕົ້ນເຫດ"

ພິກຂຸທັງຫຼາຍ ການສະມາທານທຳນີ້ເຮົາກ່າວວ່າ ມີສຸກໃນປັດຈຸບັນແຕ່ມີທຸກເປັນວິບາກໃນອະນາຄົດ

## ການສະມາທານທຳທີ່ມີທຸກແລະມີທຸກເປັນວິບາກ

[໔໗໐] ການສະມາທານທຳທີ່ມີທຸກໃນປັດຈຸບັນ ແລະ ມີທຸກເປັນວິບາກໃນອະນາຄົດເປັນແນວໃດ?

ຄື ປະຣິພາຊົກບາງຄົນໃນໂລກນີ້ເປັນອະເຈລະກະ (ປະພຶດເປືອຍກາຍ) ເປັນຜູ້ບໍ່ມີມາຣະຍາດ ເລຍມື ເຂົາເຊີນໃຫ້ໄປຮັບອາຫານກໍບໍ່ໄປ ເຂົາເຊີນໃຫ້ຢຸດຮັບອາຫານກໍບໍ່ຢຸດ ບໍ່ຮັບອາຫານທີ່ເຂົາແບ່ງໄວ້ ບໍ່ຮັບອາຫານທີ່ເຂົາເຮັດເຈາະຈົງ ບໍ່ຍິນດີອາຫານທີ່ເຂົາເຊີນ ບໍ່ຮັບອາຫານຈາກປາກໝໍ້ ບໍ່ຮັບອາຫານຈາກປາກພາຊະນະ ບໍ່ຮັບອາຫານກວມທໍຣະນີປະຕູ ບໍ່ຮັບອາຫານກວມທ່ອນໄມ້ ບໍ່ຮັບອາຫານກວມສາກ ບໍ່ຮັບອາຫານຂອງຄົນ ໒ ຄົນທີ່ກຳລັງບໍຣິໂພກ ບໍ່ຮັບອາຫານຂອງຍິງຖືພາ ບໍ່ຮັບອາຫານຂອງຍິງທີ່ກຳລັງໃຫ້ບຸດດື່ມນົມ ບໍ່ຮັບອາຫານຂອງຍິງທີ່ກ້ຽວພາຊາຍ ບໍ່ຮັບອາຫານທີ່ນັດແນະກັນເຮັດໄວ້ ບໍ່ຮັບອາຫານໃນບ່ອນລ້ຽງໝາ ບໍ່ຮັບອາຫານໃນບ່ອນມີແມງວັນໄຕ່ຕອມເປັນກຸ່ມ ໆ ບໍ່ກິນປາ ບໍ່ກິນຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມຢາດອງ ເຂົາຮັບອາຫານໃນເຮືອນຫຼັງດຽວ ເປັນຢູ່ດ້ວຍເຂົ້າຄຳດຽວ ຮັບອາຫານໃນເຮືອນ ໒ ຫຼັງ ເປັນຢູ່ດ້ວຍເຂົ້າ ໒ ຄຳ ຯລຯ ຮັບອາຫານໃນເຮືອນ ໗ ຫຼັງ ເປັນຢູ່ດ້ວຍເຂົ້າ ໗ ຄຳ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໑ ໃບ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໒ ໃບ ຯລຯ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໗ ໃບ ກິນອາຫານທີ່ເກັບໄວ້ຄ້າງຄືນ ໑ ວັນ ກິນອາຫານທີ່ເກັບໄວ້ຄ້າງຄືນ ໒ ມື້ ຯລຯ ກິນອາຫານທີ່ເກັບໄວ້ຄ້າງຄືນ ໗ ມື້ ຖືການບໍຣິໂພກອາຫານຕາມວາຣະ ໑໕ ວັນຕໍ່ມື້ແນວນີ້ ຢູ່ດ້ວຍປະການແນວນີ້

ປະຣິພາຊົກນັ້ນ ເປັນຜູ້ກິນສົ້ມຜັກເປັນອາຫານ ກິນເຂົ້າຟ່າງເປັນອາຫານ ກິນໝາກເດືອຍເປັນອາຫານ ກິນກາກເຂົ້າເປັນອາຫານ ກິນສາຫຣ່າຍເປັນອາຫານ ກິນຮຳເປັນອາຫານ

ກິນເຂົ້າກົ້ນໝໍ້ເປັນອາຫານ ກິນກຳຍານເປັນອາຫານ ກິນຫຍ້າເປັນອາຫານ ກິນມູນງົວເປັນອາຫານ ກິນເຫງົ້າແລະໝາກໄມ້ປ່າເປັນອາຫານ ບໍຣິໂພກໝາກໄມ້ຫຼົ່ນເປັນຢູ່ ປະຣິພາຊົກນັ້ນນຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມກັນ ນຸ່ງຫົ່ມຜ້າທໍ່ສົບ ນຸ່ງຫົ່ມຜ້າບັງສຸກຸນ ນຸ່ງຫົ່ມຜ້າເປືອກໄມ້ ນຸ່ງຫົ່ມໜັງເສືອ ນຸ່ງຫົ່ມໜັງເສືອມີເລັບ ນຸ່ງຫົ່ມຜ້າຄາກອງ ນຸ່ງຫົ່ມຜ້າເປືອກໄມ້ກອງ ນຸ່ງຫົ່ມຜ້າໝາກໄມ້ກອງ ນຸ່ງຫົ່ມຜ້າກຳພົນຜົມມະນຸດ ນຸ່ງຫົ່ມຜ້າກຳພົນຂົນສັດ ນຸ່ງຫົ່ມຜ້າຂົນປີກນົກເຄົ້າ ເປັນຜູ້ລົກຜົມແລະໜວດ ຄື ຖືການລົກຜົມແລະໜວດ ຢືນຢ່າງດຽວ ບໍ່ຍອມນັ່ງ ຍ່າງຢ່າງແຢ່ງແຢ້ຄືຖືການຍ່າງຢ່າງແຢ່ງແຢ້ ຖືການນອນເທິງໜາມຄືນອນເທິງທີ່ນອນທີ່ເຮັດດ້ວຍໜາມ ຖືການລົງອາບນໍ້າມື້ລະ ໓ ເທື່ອ^໑ ຖືການກ້າວແລະການອົບກາຍ ຫຼາຍຮູບແບບແນວນີ້ຢູ່ ດ້ວຍປະການແນວນີ້ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ການສະມາທານທຳນີ້ເຮົາກ່າວວ່າ ມີທຸກໃນປັດຈຸບັນ ແລະ ມີທຸກເປັນວິບາກໃນອະນາຄົດ

## ການສະມາທານທຳທີ່ມີທຸກແຕ່ມີສຸກເປັນວິບາກ

[໔໗໑] ການສະມາທານທຳທີ່ມີທຸກໃນປັດຈຸບັນ ແຕ່ມີສຸກເປັນວິບາກໃນອະນາຄົດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ມີຣາຄະກ້າໂດຍປົກກະຕິ ສະເຫວີຍທຸກໂທມະນັດອັນເກີດຈາກຣາຄະເລື້ອຍ ໆ ເປັນຜູ້ມີໂທສະກ້າໂດຍປົກກະຕິ ສະເຫວີຍທຸກໂທມະນັດອັນເກີດຈາກໂທສະເລື້ອຍ ໆ ເປັນຜູ້ມີໂມຫະກ້າໂດຍປົກກະຕິ ສະເຫວີຍທຸກໂທມະນັດອັນເກີດຈາກໂມຫະເລື້ອຍ ໆ ບຸກຄົນນັ້ນມີທຸກແດ່ ມີໂທມະນັດແດ່ ເປັນຜູ້ມີໜ້ານອງດ້ວຍນໍ້າຕາຮ້ອງໄຫ້ຢູ່ ປະພຶດພົມມະຈັນບໍລິສຸດ ບໍລິບູນ ຫຼັງຈາກຕາຍແລ້ວ ເຂົາໄປເກີດໃນສຸຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ການສະມາທານທຳນີ້ເຮົາກ່າວວ່າ ມີທຸກໃນປັດຈຸບັນແຕ່ມີສຸກເປັນວິບາກໃນອະນາຄົດ

## ການສະມາທານທຳທີ່ມີສຸກແລະມີສຸກເປັນວິບາກ

[໔໗໒] ການສະມາທານທຳທີ່ມີສຸກໃນປັດຈຸບັນ ແລະ ມີສຸກເປັນວິບາກໃນອະນາຄົດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ບໍ່ມີຣາຄະກ້າໂດຍປົກກະຕິ ບໍ່ສະເຫວີຍທຸກໂທມະນັດ ອັນເກີດຈາກຣາຄະເລື້ອຍ ໆ ເປັນຜູ້ບໍ່ມີໂທສະກ້າໂດຍປົກກະຕິ ບໍ່ສະເຫວີຍທຸກໂທມະນັດ

ອັນເກີດຈາກໂທສະເລື້ອຍ ໆ ເປັນຜູ້ບໍ່ມີໂມຫະກ້າໂດຍປົກກະຕິ ບໍ່ສະເຫວີຍທຸກໂທມະນັດອັນເກີດຈາກໂມຫະເລື້ອຍ ໆ ບຸກຄົນນັ້ນ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ຢູ່ ຫຼັງຈາກຕາຍແລ້ວ ເຂົ້າໄປເກີດໃນສຸຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ການສະມາທານທຳນີ້ເຮົາກ່າວວ່າ ມີສຸກໃນປັດຈຸບັນແລະມີສຸກເປັນວິບາກໃນອະນາຄົດ

ພິກຂຸທັງຫຼາຍ ການສະມາທານທຳ ໔ ປະການນີ້ແລ"

ພຣະຜູ້ມີພຣະພາກເຈົ້າໄດ້ ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະທຳທະສະມາທານສູດທີ ໕ ຈົບ**

# ໖. ມະຫາທຳມະສະມາທານສູດ

## ວ່າດ້ວຍການສະມາທານທຳ ສູດໃຫຍ່

## ເຫດທີ່ສິ່ງທັງຫຼາຍບໍ່ເປັນໄປຕາມຄວາມປາຖະໜາ

[໔໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື່ອງນີ້ ວ່າ

"ພິກຂຸທັງຫຼາຍ ສ່ວນຫຼາຍສັດທັງຫຼາຍມີຄວາມປາຖະໜາ ມີຄວາມພໍໃຈ ມີຄວາມປະສົງແນວນີ້ວ່າ "ເຮັດແນວໃດນໍ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ຈະເພິ່ງເສື່ອມໄປທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຈະເພິ່ງຈະເລີນຍິ່ງຂຶ້ນ" ເມື່ອສັດເຫຼົ່ານັ້ນ ມີຄວາມ

ປາຖະໜາ ມີຄວາມພໍໃຈ ມີຄວາມປະສົງຢ່າງນີ້ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ຈະເລີນຍິ່ງຂຶ້ນ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ເສື່ອມໄປ ພິກຂຸທັງຫຼາຍ ທ່ານທັງຫຼາຍ ພວກທ່ານເຂົ້າໃຈເຫດໃນຂໍ້ນັ້ນວ່າແນວໃດ?"

ພິກຂຸເຫຼົ່ານັ້ນ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນໃຫ້ແຈ້ງຊັດເທີ້ນ ພິກຂຸທັງຫຼາຍໄດ້ສະດັບແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ວ່າ

[໔໗໔] "ພິກຂຸທັງຫຼາຍ ປຸຖຸຊົນໃນໂລກນີ້ຜູ້ຍັງບໍ່ໄດ້ສະດັບ ບໍ່ໄດ້ພົບພຣະອະຣິຍະທັງຫຼາຍ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບຄຳແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ພົບສັດຕະບຸຣຸດທັງຫຼາຍ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບຄຳແນະນຳໃນທຳຂອງສັດຕະບຸຣຸດ ບໍ່ຮູ້ຈັກທຳທີ່ຄວນເສບ ບໍ່ຮູ້ຈັກທຳທີ່ບໍ່ຄວນເສບ ບໍ່ຮູ້ຈັກທຳທີ່ຄວນຄົບ[໒] ບໍ່ຮູ້ຈັກທຳທີ່ບໍ່ຄວນຄົບ ເມື່ອບໍ່ຮູ້ຈັກທຳທີ່ຄວນເສບ ບໍ່ຮູ້ຈັກທຳທີ່ບໍ່ຄວນເສບ ບໍ່ຮູ້ຈັກທຳທີ່ຄວນຄົບ ບໍ່ຮູ້ຈັກທຳທີ່ບໍ່ຄວນຄົບ ກໍເສບທຳທີ່ບໍ່ຄວນເສບ ບໍ່ເສບທຳທີ່ຄວນເສບ ຄົບທຳທີ່ບໍ່ຄວນຄົບ ບໍ່ຄົບທຳທີ່ຄວນຄົບ ເມື່ອເສບທຳທີ່ບໍ່ຄວນເສບ ບໍ່ເສບທຳທີ່ຄວນເສບ ຄົບທຳທີ່ບໍ່ຄວນຄົບ ບໍ່ຄົບທຳທີ່ຄວນຄົບ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ກໍຈະເລີນຍິ່ງຂຶ້ນ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ກໍເສື່ອມໄປ ຂໍ້ນັ້ນຍ້ອນເຫດໃດ ຍ້ອນປຸຖຸຊົນຮູ້ບໍ່ຖືກຕ້ອງ

ພິກຂຸທັງຫຼາຍ ສ່ວນອະຣິຍະສາວົກຜູ້ໄດ້ສະດັບແລ້ວ ໄດ້ພົບພຣະອະຣິຍະທັງຫຼາຍ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບຄຳແນະນຳດີແລ້ວໃນທຳຂອງພຣະອະຣິຍະ ພົບສັດຕະບຸຣຸດທັງຫຼາຍ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບຄຳແນະນຳດີແລ້ວໃນທຳຂອງສັດຕະບຸຣຸດ ຮູ້ຈັກທຳທີ່ຄວນເສບ ຮູ້ຈັກທຳທີ່ບໍ່ຄວນເສບ ຮູ້ຈັກທຳທີ່ຄວນຄົບ ຮູ້ຈັກທຳທີ່ບໍ່ຄວນຄົບ ເມື່ອຮູ້ຈັກທຳທີ່ຄວນເສບ ຮູ້ຈັກທຳທີ່ບໍ່ຄວນເສບ ຮູ້ຈັກທຳທີ່ຄວນຄົບ ຮູ້ຈັກທຳທີ່ບໍ່ຄວນຄົບ ກໍບໍ່ເສບທຳທີ່ບໍ່ຄວນເສບ ເສບທຳທີ່ຄວນເສບ ບໍ່ຄົບທຳທີ່ບໍ່ຄວນຄົບ ຄົບທຳທີ່ຄວນຄົບ ເມື່ອບໍ່ເສບທຳທີ່ບໍ່ຄວນເສບ ເສບທຳທີ່ຄວນເສບ ບໍ່ຄົບທຳທີ່ບໍ່ຄວນຄົບ ຄົບທຳທີ່ຄວນຄົບ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ກໍເສື່ອມໄປ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ກໍຈະເລີນຍິ່ງຂຶ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນອະຣິຍະສາວົກຮູ້ຖືກຕ້ອງ

## ການສະມາທານທຳ ໔ ປະການ

[໔໗໔] ພິກຂຸທັງຫຼາຍ ການສະມາທານທຳ ໔ ປະການນີ້

ການສະມາທານທຳ ໔ ປະການ ອັນໃດແນ ຄື

໑. ການສະມາທານທຳທີ່ມີທຸກໃນປັດຈຸບັນ ແລະມີທຸກເປັນວິບາກໃນອະນາຄົດ
໒. ການສະມາທານທຳທີ່ມີສຸກໃນປັດຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ
໓. ການສະມາທານທຳທີ່ທຸກໃນປັດຈຸບັນ ແຕ່ມີສຸກເປັນວິບາກໃນອະນາຄົດ
໔. ການສະມາທານທຳທີ່ມີສຸກໃນປັດຈຸບັນ ແລະມີສຸກເປັນວິບາກໃນອະນາຄົດ

[໔໗໕] ພິກຂຸທັງຫຼາຍ

໑. ບັນດາການສະມາທານທຳເຫຼົ່ານັ້ນ ບຸກຄົນຜູ້ບໍ່ຮູ້ຈັກການສະມາທານທຳ ທີ່ມີທຸກໃນປັດຈຸບັນ ແລະ ມີທຸກເປັນວິບາກໃນອະນາຄົດຕ ຕົກຢູ່ໃນອະວິດຊາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ການສະມາທານທຳນີ້ມີທຸກໃນປັດຈຸບັນ ແລະ ມີທຸກເປັນວິບາກໃນອະນາຄົດ" ເມື່ອບໍ່ຮູ້ຈັກການສະມາທານທຳເຫຼົ່ານັ້ນ ຕົກຢູ່ໃນອະວິດຊາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງ ຈຶ່ງເສບການສະມາທານທຳນັ້ນ ບໍ່ລະເວັ້ນການສະມາທານທຳນັ້ນ ເມື່ອເສບການສະມາທານທຳນັ້ນ ບໍ່ລະເວັ້ນການສະມາທານທຳນັ້ນ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ກໍຈະເລີນຍິ່ງຂຶ້ນ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຍ່ອມເສື່ອມໄປ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນຮູ້ບໍ່ຖືກຕ້ອງ

໒. ບຸກຄົນຜູ້ບໍ່ຮູ້ຈັກການສະມາທານທຳທີ່ມີສຸກໃນປັດຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ ຕົກຢູ່ໃນອະວິດຊາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ການສະມາທານທຳນີ້ມີສຸກໃນປັດຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ" ເມື່ອບໍ່ຮູ້ຈັກການສະມາທານທຳນັ້ນແລ້ວຕົກຢູ່ໃນອະວິດຊາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງ ຈຶ່ງເສບການສະມາທານທຳນັ້ນ ບໍ່ລະເວັ້ນທຳສະມາທານນັ້ນ ເມື່ອເສບການສະມາທານທຳນັ້ນ ບໍ່ລະເວັ້ນການສະມາທານທຳນັ້ນ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ກໍຈະເລີນຍິ່ງຂຶ້ນ ທຳ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຍ່ອມເສື່ອມໄປ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ຮູ້ບໍ່ຖືກຕ້ອງ

໓. ບຸກຄົນຜູ້ບໍ່ຮູ້ຈັກການສະມາທານທຳທີ່ມີທຸກໃນປັດຈຸບັນ ແຕ່ມີສຸກເປັນວິບາກໃອະນາຄົດ ຕົກຢູ່ໃນອະວິດຊາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ການສະມາທານທຳນີ້ມີທຸກໃນປັດຈຸບັນ ແຕ່ມີສຸກເປັນວິບາກໃນອະນາຄົດ" ເມື່ອບໍ່ຮູ້ຈັກການສະມາທານທຳນັ້ນ ຕົກຢູ່ໃນອະວິດຊາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງ ບໍ່ເສບການສະມາທານທຳນັ້ນ ລະເວັ້ນການສະມາທານທຳນັ້ນ ເມື່ອບໍ່

ເສບການສະມາທານທຳນັ້ນ ລະເວັ້ນການສະມາທານທຳນັ້ນ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ກໍຈະເລີນຍິ່ງຂຶ້ນ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຍ່ອມເສື່ອມໄປ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ຮູ້ບໍ່ຖືກຕ້ອງ

໔. ບຸກຄົນຜູ້ບໍ່ຮູ້ຈັກການສະມາທານທຳທີ່ມີສຸກໃນປັດຈຸບັນ ແລະ ມີສຸກເປັນວິບາກໃນອະນາຄົດ ຕົກຢູ່ໃນອະວິດຊາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ການສະມາທານທຳນີ້ມີສຸກໃນປັດຈຸບັນແລະມີສຸກເປັນວິບາກໃນອະນາຄົດ" ເມື່ອບໍ່ຮູ້ຈັກການສະມາທານທຳນັ້ນ ຕົກຢູ່ໃນອະວິດຊາ ບໍ່ຮູ້ແຈ້ງຕາມຄວາມເປັນຈິງ ບໍ່ເສບການສະມາທານທຳນັ້ນ ລະເວັ້ນການສະມາທານທຳນັ້ນ ເມື່ອບໍ່ເສບການສະມາທານທຳນັ້ນ ລະເວັ້ນການສະມາທານທຳນັ້ນ ທຳ ທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ກໍຈະເລີນຍິ່ງຂຶ້ນ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຍ່ອມເສື່ອມໄປ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ຮູ້ບໍ່ຖືກຕ້ອງ

[໕໗໗] ພິກຂຸທັງຫຼາຍ

໑. ບັນດາການສະມາທານທຳເຫຼົ່ານັ້ນ ບຸກຄົນຜູ້ຮູ້ຈັກການສະມາທານທຳທີ່ມີທຸກໃນປັດຈຸບັນແລະມີທຸກເປັນວິບາກໃນອະນາຄົດ ມີວິດຊາ ຮູ້ແຈ້ງຕາມ ຄວາມເປັນຈິງວ່າ "ການສະມາທານທຳນີ້ມີທຸກໃນປັດຈຸບັນ ແລະ ມີທຸກເປັນວິບາກໃນອະນາຄົດ" ເມື່ອຮູ້ຈັກການສະມາທານທຳນັ້ນ ມີວິດຊາ ຮູ້ແຈ້ງຕາມຄວາມເປັນຈິງ ຈຶ່ງບໍ່ເສບການສະມາທານທຳນັ້ນ ລະເວັ້ນການສະມາທານທຳນັ້ນ ເມື່ອບໍ່ເສບການສະມາທານທຳນັ້ນ ລະເວັ້ນການ ສະມາທານທຳນັ້ນ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ກໍເສື່ອມໄປ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຍ່ອມຈະເລີນຍິ່ງຂຶ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ຮູ້ຖືກຕ້ອງ

໒. ບຸກຄົນຜູ້ຮູ້ຈັກການສະມາທານທຳທີ່ມີສຸກໃນປັດຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ ມີວິດຊາ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ການສະມາທານ ທຳນີ້ມີສຸກໃນປັດຈຸບັນແຕ່ມີທຸກເປັນວິບາກໃນອະນາຄົດ" ເມື່ອຮູ້ຈັກການສະມາທານທຳນັ້ນ ມີວິດຊາ ຮູ້ແຈ້ງຕາມຄວາມເປັນຈິງ ຈຶ່ງບໍ່ເສບການສະມາທານທຳນັ້ນ ລະເວັ້ນການສະມາທານທຳນັ້ນ ເມື່ອບໍ່ເສບການສະມາທານທຳນັ້ນ ລະເວັ້ນການສະມາທານທຳນັ້ນ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ກໍເສື່ອມໄປ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຍ່ອມຈະເລີນຍິ່ງຂຶ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນ ຮູ້ຖືກຕ້ອງ

໓. ບຸກຄົນຜູ້ຮູ້ຈັກການສະມາທານທຳທີ່ມີທຸກໃນປັດຈຸບັນ ແຕ່ມີສຸກເປັນວິບາກໃນອະນາຄົດ ມີວິດຊາ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ການສະມາທານທຳນີ້ ມີທຸກໃນປັດຈຸບັນແຕ່ມີສຸກເປັນວິບາກໃນອະນາຄົດ" ເມື່ອຮູ້ຈັກການສະມາທານທຳນັ້ນ ມີວິດຊາ ຮູ້ແຈ້ງຕາມຄວາມເປັນຈິງ ຈຶ່ງເສບການສະມາທານທຳນັ້ນ ບໍ່ລະເວັ້ນການສະມາທານທຳນັ້ນ ເມື່ອເສບການ ສະມາທານທຳ

ນັ້ນ ບໍ່ລະເວັ້ນການສະມາທານທຳນັ້ນ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ກໍ ເສື່ອມໄປ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຍ່ອມຈະເລີນຍິ່ງຂຶ້ນ ຂໍ້ນັ້ນ ຍ້ອນເຫດ ໃດ ຍ້ອນບຸກຄົນນັ້ນ ຮູ້ຖືກຕ້ອງ

໔. ບຸກຄົນຜູ້ຮູ້ຈັກການສະມາທານທຳທີ່ມີສຸກໃນປັດຈຸບັນ ແລ ະມີສຸກເປັນວິບາກໃນ ອະນາຄົດ ມີວິດຊາ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ການສະມາທານທຳນີ້ມີສຸກໃນປັດຈຸບັນ ແລະ ມີສຸກເປັນວິບາກໃນອະນາຄົດ" ເມື່ອຮູ້ຈັກການສະມາທານທຳນັ້ນ ມີວິດຊາ ຮູ້ແຈ້ງຕາມຄວາມ ເປັນຈິງ ຈຶ່ງເສບການ ສະມາທານທຳນັ້ນ ບໍ່ລະເວັ້ນການສະມາທານທຳນັ້ນ ເມື່ອເສບການ ສະ ມາທານທຳນັ້ນ ບໍ່ລະເວັ້ນການສະມາທານທຳນັ້ນ ທຳທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າ ພໍໃຈກໍເສື່ອມໄປ ທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຍ່ອມຈະເລີນຍິ່ງຂຶ້ນ ຂໍ້ນັ້ນຍ້ອນ ເຫດອັນໃດ ຍ້ອນບຸກຄົນນັ້ນ ຮູ້ຖືກຕ້ອງ

## ການສະມາທານທຳທີ່ມີທຸກແລະມີທຸກເປັນວິບາກ

[໔໗໘] ການສະມາທານທຳທີ່ມີທຸກໃນປັດຈຸບັນ ແລະ ມີທຸກເປັນວິບາກໃນອະນາຄົດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນຂ້າສັດແລະຍ້ອນການ ຂ້າສັດເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນລັກຊັບ ແລະຍ້ ອນການລັກຊັບເປັນປັດໄຈ ເຂົາ ຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນປະພຶດຜິດໃນກາມ ແລະ ຍ້ອນການປະພຶດຜິດໃນ ກາມເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວົ້າຕົວະ ແລະ ຍ້ອນການເວົ້າຕົວະເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວົ້າສັບສໍ່ ແລະ ຍ້ອນການເວົ້າສັບສໍ່ເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວົ້າຄຳຫຍາບ ແລະ ຍ້ອນການເວົ້າຄຳຫຍາບເປັນ ປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວົ້າບໍ່ມີສາຣະ ແລະ ຍ້ອນການເວົ້າບໍ່ມີສາຣະເປັນ ປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນຫຼາຍ ແລະ ຍ້ອນການເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນຫຼາຍເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນມີຈິດປອງຮ້າຍຜູ້ອື່ນ ແລະ ຍ້ອນການມີຈິດປອງຮ້າຍຜູ້ອື່ນເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນມີຄວາມເຫັນຜິດ ແລະ ຍ້ອນຄວາມເຫັນຜິດເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ການສະມາທານທຳນີ້ເຮົາກ່າວວ່າ ມີທຸກໃນປັດຈຸບັນ ແລະມີທຸກເປັນວິບາກໃນອະນາຄົດ (໑)

## ການສະມາທານທຳທີ່ມີສຸກແຕ່ມີທຸກເປັນວິບາກ

[໔໗໙] ການສະມາທານທຳທີ່ມີສຸກໃນປັດຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນຂ້າສັດ ແລະຍ້ອນການຂ້າສັດເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນລັກຊັບ ແລະ ຍ້ອນການລັກຊັບເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນປະພຶດຜິດໃນກາມ ແລະ ຍ້ອນການປະພຶດຜິດໃນກາມເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວົ້າຕົວະ ແລະ ຍ້ອນການເວົ້າຕົວະເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວົ້າສັບສໍ່ ແລະ ຍ້ອນການເວົ້າສັບສໍ່ເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວົ້າຄຳຫຍາບ ແລະ ຍ້ອນການເວົ້າຄຳຫຍາບເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວົ້າບໍ່ມີສາລະ ແລະ ຍ້ອນການເວົ້າບໍ່ມີສາລະເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນຫຼາຍ ແລະ ຍ້ອນການເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນຫຼາຍເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນມີຈິດປອງຮ້າຍຜູ້ອື່ນ ແລະ ຍ້ອນການມີຈິດປອງຮ້າຍຜູ້ອື່ນເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນມີຄວາມເຫັນຜິດ ແລະ ຍ້ອນຄວາມເຫັນຜິດເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ການສະມາທານທຳນີ້ເຮົາກ່າວວ່າ ມີສຸກໃນປັດຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ (໔)

## ການສະມາທານທຳທີ່ມີທຸກແຕ່ມີສຸກເປັນວິບາກ

[໔໗໐] ການສະມາທານທຳທີ່ມີທຸກໃນປັດຈຸບັນ ແຕ່ມີສຸກເປັນວິບາກໃນອະນາຄົດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການຂ້າສັດ ແລະ ຍ້ອນການເວັ້ນຂາດຈາກການຂ້າສັດເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການລັກຊັບ ແລະ ຍ້ອນການເວັ້ນຂາດຈາກການລັກຊັບເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການປະພຶດຜິດໃນກາມ ແລະຍ້ອນການເວັ້ນຂາດຈາກການປະພຶດຜິດໃນກາມເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການເວົ້າຕົວະ ແລະ ຍ້ອນການເວັ້ນຂາດຈາກການເວົ້າຕົວະເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກເວົ້າສັບສໍ່ ແລະ ຍ້ອນການເວັ້ນຂາດຈາກການເວົ້າສັບສໍ່ເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກເວົ້າຄຳຫຍາບ ແລະ ຍ້ອນການເວັ້ນຂາດຈາກການເວົ້າຄຳຫຍາບເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການເວົ້າບໍ່ມີສາລະ ແລະ ຍ້ອນການເວັ້ນຂາດຈາກການເວົ້າບໍ່ມີສາລະເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນບໍ່ມີຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ແລະ ຍ້ອນການບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນມີຈິດບໍ່ປອງຮ້າຍຜູ້ອື່ນ ແລະ ຍ້ອນການມີຈິດບໍ່ປອງຮ້າຍຜູ້ອື່ນເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

ມີທຸກແດ່ ມີໂທມະນັດແດ່ ຈຶ່ງເປັນຄົນມີຄວາມເຫັນຖືກ ແລະ ຍ້ອນມີຄວາມເຫັນຖືກເປັນປັດໄຈ ເຂົາຈຶ່ງສະເຫວີຍທຸກໂທມະນັດ

## ຫຼັງຈາກຕາຍແລ້ວເຂົາຍ່ອມໄປເກີດໃນສຸຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ການສະມາທານທຳນີ້ເຮົາກ່າວວ່າ ມີທຸກໃນປັດຈຸບັນແຕ່ມີສຸກເປັນວິບາກໃນອະນາຄົດ (໓)

## ການສະມາທານທຳທີ່ມີສຸກແລະມີສຸກເປັນວິບາກ

[໔໗໑] ການສະມາທານທຳທີ່ມີສຸກໃນປັດຈຸບັນ ແລະ ມີສຸກເປັນວິບາກໃນອະນາຄົດເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການຂ້າສັດ ແລະ ຍ້ອນການເວັ້ນຂາດຈາກການຂ້າສັດເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການລັກຊັບ ແລະ ຍ້ອນການເວັ້ນຂາດຈາກການລັກຊັບເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການປະພຶດຜິດໃນກາມ ແລະຍ້ອນການເວັ້ນຂາດຈາກການປະພຶດຜິດໃນກາມເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການເວົ້າຕົວະ ແລະ ຍ້ອນການເວັ້ນຂາດຈາກການເວົ້າຕົວະເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກວາຈາສັບສໍ່ ແລະຍ້ອນການເວັ້ນຂາດຈາກການເວົ້າສັບສໍ່ເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການເວົ້າຄຳຫຍາບ ແລະຍ້ອນການເວັ້ນຂາດຈາກການເວົ້າຄຳຫຍາບເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນເວັ້ນຂາດຈາກການເວົ້າບໍ່ມີສາຣະ ແລະຍ້ອນການເວັ້ນຂາດຈາກການເວົ້າບໍ່ມີສາຣະເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນບໍ່ມີຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນຫຼາຍ ແລະຍ້ອນການເວັ້ນຂາດຈາກການບໍ່ມີຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນມີຈິດບໍ່ປອງຮ້າຍຜູ້ອື່ນ ແລະຍ້ອນການມີຈິດບໍ່ປອງຮ້າຍຜູ້ອື່ນເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ມີສຸກແດ່ ມີໂສມະນັດແດ່ ຈຶ່ງເປັນຄົນມີຄວາມເຫັນຖືກ ແລະຍ້ອນມີຄວາມເຫັນຖືກເປັນປັດໄຈ ເຂົາຈຶ່ງສະເຫວີຍສຸກໂສມະນັດ

ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນສຸຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ການສະມາທານທຳນີ້ເຮົາກ່າວວ່າ ມີສຸກໃນປັດຈຸບັນ ແລະມີສຸກເປັນວິບາກໃນອະນາຄົດ (໔)

ພິກຂຸທັງຫຼາຍ ການສະມາທານທຳ ໔ ປະການນີ້ແລ

## ອຸປະມາຂອງການສະມາທານທຳ ໔ ປະການ

[໔໗໔] ພິກຂຸທັງຫຼາຍ

໑. ປຽບເໝືອນນ້ຳເຕົ້າຂົມປະສົມດ້ວຍຢາພິດ ບຸຣຸດທີ່ຮັກຊີວິດ ຍັງບໍ່ຢາກຕາຍ ຮັກສຸກກຽດຊັງທຸກ ມາເຖິງ ພວກຊາວບ້ານບອກເຂົາວ່າ "ບຸຣຸດຜູ້ຈະເລີນ ນ້ຳເຕົ້າຂົມນີ້ປະສົມດ້ວຍຢາພິດ ຖ້າທ່ານຫວັງຈະດື່ມ ກໍດື່ມເທີ້ນ ນ້ຳເຕົ້າຂົມນັ້ນ ຈັກບໍ່ເຮັດໃຫ້ທ່ານຜູ້ດື່ມພໍໃຈ ທັງສີ ກິ່ນ ແລະຣົດ ເມື່ອທ່ານດື່ມ ເຂົ້າໄປແລ້ວກໍຈັກເຖິງຕາຍ ຫຼື ໄດ້ຮັບທຸກປາງຕາຍ" ບຸຣຸດນັ້ນ ບໍ່ພິຈາລະນາ ນ້ຳເຕົ້າຂົມນັ້ນ ດື່ມບໍ່ໄດ້ວາງ ນ້ຳເຕົ້າຂົມນັ້ນກໍບໍ່ເຮັດໃຫ້ເຂົາຜູ້ດື່ມພໍໃຈທັງສີ ກິ່ນ ແລະຣົດ ເມື່ອດື່ມແລ້ວເພິ່ງເຮັດໃຫ້ຕາຍຫຼືໄດ້ຮັບທຸກປາງຕາຍ ແມ່ນສັນໃດ ເຮົາກ່າວວ່າ ການສະມາທານທຳນີ້ທີ່ມີທຸກໃນປັດຈຸບັນ ແລະ ມີທຸກເປັນວິບາກ ໃນອະນາຄົດ ມີອຸປະມາສັນນັ້ນ

[໔໗໓] ພິກຂຸທັງຫຼາຍ

໔. ປຽບເໝືອນ ນ້ຳຫວານ ໑ ພາຊະນະ ໜ້າດື່ມ ເຖິງພ້ອມດ້ວຍສີ ກິ່ນແລະຣົດ ແຕ່ປະສົມດ້ວຍຢາພິດ ບຸຣຸດທີ່ຮັກຊີວິດ ຍັງບໍ່ຢາກຕາຍ ຮັກສຸກ ກຽດຊັງທຸກ ມາເຖິງ ພວກຊາວບ້ານກໍບອກເຂົາວ່າ “ທ່ານຜູ້ຈະເລີນ ນ້ຳຫວານ ໑ ພາຊະນະ ໜ້າດື່ມ ເຖິງພ້ອມດ້ວຍສີ ກິ່ນແລະຣົດ ແຕ່ປະສົມດ້ວຍຢາພິດ ຖ້າທ່ານຫວັງຈະດື່ມ ກໍຈົ່ງດື່ມເທີ້ນ ນ້ຳຫວານ ໑ ພາຊະນະນັ້ນຈັກເຮັດໃຫ້ທ່ານຜູ້ດື່ມພໍໃຈ ທັງສີ ກິ່ນ ແລະ ຣົດ ເມື່ອທ່ານດື່ມເຂົ້າໄປແລ້ວກໍຈັກເຖິງແກ່ຄວາມຕາຍຫຼືຈັກໄດ້ຮັບທຸກປາງຕາຍ” ບຸຣຸດນັ້ນ ບໍ່ພິຈາລະນານ້ຳຫວານໃນພາຊະນະນັ້ນແລ້ວ ດື່ມບໍ່ໄດ້ວາງ ນ້ຳຫວານໃນພາຊະນະນັ້ນ ກໍເຮັດໃຫ້ເຂົາຜູ້ດື່ມພໍໃຈ ທັງສີ ກິ່ນ ແລະຣົດ ເມື່ອດື່ມແລ້ວເພິ່ງເຖິງແກ່ຄວາມຕາຍ ຫຼື ໄດ້ຮັບທຸກປາງຕາຍ

ແມ່ນສັນໃດ ເຮົາກ່າວວ່າ ການສະມາທານທຳນີ້ທີ່ມີສຸກໃນປັດຈຸບັນ ແຕ່ມີທຸກເປັນວິບາກໃນອະນາຄົດ ມີອຸປະມາສັນນັ້ນ

[໔໗໔] ພິກຂຸທັງຫຼາຍ

໓. ປຽບເໝືອນນ້ຳມູດເນົ່າທີ່ປະສົມດ້ວຍຢາຕ່າງ ໆ ບຸຣຸດທີ່ເປັນໂຣກຂີ້ໝາກເຫຼືອງ ມາເຖິງພວກຊາວບ້ານບອກເຂົາວ່າ “ບຸຣຸດຜູ້ຈະເລີນ ນ້ຳມູດເນົ່າປະສົມດ້ວຍຢາຕ່າງ ໆ ນີ້ ຖ້າທ່ານຫວັງຈະດື່ມ ກໍດື່ມເທີ້ນ ນ້ຳມູນເນົ່ານັ້ນ ຈັກບໍ່ເຮັດໃຫ້ທ່ານຜູ້ດື່ມພໍໃຈ ທັງສີ ກິ່ນ ແລະ ຣົດເມື່ອທ່ານດື່ມເຂົ້າໄປແລ້ວ ກໍຈັກມີສຸກ” ບຸຣຸດນັ້ນ ພິຈາລະນາແລ້ວດື່ມບໍ່ໄດ້ວາງ ນ້ຳມູດເນົ່ານັ້ນກໍບໍ່ເຮັດໃຫ້ເຂົາຜູ້ດື່ມພໍໃຈ ທັງສີ ກິ່ນ ແລະ ຣົດ ເມື່ອດື່ມແລ້ວກໍມີສຸກ ແມ່ນສັນໃດ ເຮົາກ່າວວ່າ ການສະມາທານທຳນີ້ທີ່ມີທຸກໃນປັດຈຸບັນ ແຕ່ມີສຸກເປັນວິບາກ ໃນອະນາຄົດ ມີອຸປະມາສັນນັ້ນ

[໔໗໕] ພິກຂຸທັງຫຼາຍ

໔. ປຽບເໝືອນນົມສົ້ມ ນ້ຳເຜິ້ງ ເນີຍໃສ ແລະ ນ້ຳອ້ອຍ ທີ່ປະສົມເຂົ້ານຳກັນ ບຸຣຸດຜູ້ເປັນໂຣກລົງແດງ ມາເຖິງ ພວກຊາວບ້ານບອກເຂົາວ່າ “ບຸຣຸດຜູ້ຈະເລີນ ນົມສົ້ມ ນ້ຳເຜິ້ງ ເນີຍໃສ ແລະ ນ້ຳອ້ອຍນີ້ ເຂົາປະສົມເຂົ້ານຳກັນ ຖ້າທ່ານຫວັງຈະດື່ມ ກໍດື່ມເທີ້ນ ຢານັ້ນຈັກເຮັດໃຫ້ທ່ານຜູ້ດື່ມພໍໃຈ ທັງສີ ກິ່ນ ແລະຣົດ ເມື່ອທ່ານດື່ມເຂົ້າໄປແລ້ວຈັກມີສຸກ” ບຸຣຸດນັ້ນ ພິຈາລະນາຢານັ້ນແລ້ວດື່ມບໍ່ໄດ້ວາງ ຢານັ້ນກໍເຮັດໃຫ້ເຂົາຜູ້ດື່ມພໍໃຈທັງສີ ກິ່ນ ແລະ ຣົດ ເມື່ອດື່ມ ແລ້ວກໍມີຄວາມສຸກ ແມ່ນສັນໃດ ເຮົາກ່າວວ່າການສະມາທານທຳນີ້ທີ່ມີສຸກໃນ ປັດຈຸບັນແລະມີສຸກເປັນວິບາກໃນອະນາຄົດ ມີອຸປະມາສັນນັ້ນ

[໔໗໖] ພິກຂຸທັງຫຼາຍ ປຽບເໝືອນໃນສາຣະທະການເຊິ່ງເປັນເດືອນທ້າຍແຫ່ງລະດູຝົນ

ອາກາດໂປ່ງປາສະຈາກເມກຝົນ ດວງອາທິດລອຍຢູ່ໃນທ້ອງຟ້າ ກຳຈັດຄວາມມືດໃນອາກາດທັງໝົດ ຍ່ອມສ່ອງແສງສະຫວ່າງເຈີດຈ້າ ແມ່ນສັນໃດ ການສະມາທານທຳນີ້ກໍຄືກັນສັນນັ້ນ ມີສຸກໃນປັດຈຸບັນ ແລະ ມີສຸກເປັນວິບາກໃນອະນາຄົດ ກຳຈັດຄຳຕິຕຽນຂອງຜູ້ອື່ນ ຄື ສະມະນະພາມເປັນຈຳນວນຫຼາຍເຫຼົ່າອື່ນ ຍ່ອມສ່ອງແສງສະຫວ່າງເຈີດຈ້າ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາທຳມະສະມາທານສູດທີ ໖ ຈົບ**

# ໗. ວີມັງສະກະສູດ

## ວ່າດ້ວຍຜູ້ກວດສອບ

[໔໗໗] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນທີ່ນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ "ພິກຂຸທັງຫຼາຍ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ພິກຂຸຜູ້ກວດສອບ ເມື່ອບໍ່ຮູ້ວາຣະຈິດຂອງຜູ້ອື່ນ ເພິ່ງທຳການພິຈາລະນາກວດສອບຕະຖາຄົດເພື່ອຮູ້ວ່າ "ຕະຖາຄົດເປັນພຣະສຳມາສຳພຸດທະເຈົ້າຫຼືບໍ່?"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນ ໃຫ້ແຈ້ງຊັດດ້ວຍເທີ້ນ ພິກຂຸທັງຫຼາຍ ໄດ້ສະດັບແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຖ້າເປັນແບບນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ວ່າ

# ການກວດສອບທຳຂອງພຣະຕະຖາຄົດ

[໔໗໘] "ພິກຂຸທັງຫຼາຍ ພິກຂຸຜູ້ກວດສອບ ເມື່ອບໍ່ຮູ້ວາຣະຈິດຂອງຜູ້ອື່ນ ເພິ່ງພິຈາລະນາກວດສອບຕະຖາຄົດໃນທຳ ໔ ປະການ ຄື (໑) ທຳທີ່ຈະຮູ້ແຈ້ງທາງຕາ (໔) ທຳທີ່ຈະຮູ້ແຈ້ງທາງຫູວ່າ "ຕະຖາຄົດມີທຳທີ່ຈະຮູ້ແຈ້ງທາງຕາ ແລະ ທາງຫູອັນເສົ້າໝອງຫຼືບໍ່?" ເມື່ອພິຈາລະນາກວດສອບຕະຖາຄົດນັ້ນຢູ່ກໍຈະຮູ້ແນວນີ້ວ່າ "ຕະຖາຄົດ ບໍ່ໄດ້ມີທຳທີ່ຈະຮູ້ແຈ້ງທາງຕາ ແລະທາງຫູອັນເສົ້າໝອງ"

ເມື່ອພິຈາລະນາກວດສອບຕະຖາຄົດຢູ່ ຮູ້ແນວນີ້ວ່າ "ຕະຖາຄົດບໍ່ໄດ້ມີທຳທີ່ຈະເພິ່ງຮູ້ແຈ້ງທາງຕາ ແລະ ທາງຫູອັນເສົ້າໝອງ" ຈາກນັ້ນ ກໍພິຈາລະນາກວດສອບຕະຖາຄົດໃຫ້ຍິ່ງຂຶ້ນໄປວ່າ "ຕະຖາຄົດ ມີທຳທີ່ຈະຮູ້ແຈ້ງທາງຕາ ແລະ ທາງຫູອັນຜະສົມກັນ໌ຫຼືບໍ່?" ເມື່ອພິຈາລະນາກວດສອບຕະຖາຄົດນັ້ນ ຢູ່ກໍຈະຮູ້ແນວນີ້ວ່າ "ຕະຖາຄົດບໍ່ໄດ້ມີທຳທີ່ຈະຮູ້ແຈ້ງທາງຕາ ແລະທາງຫູອັນຜະສົມກັນ"

ເມື່ອພິຈາລະນາກວດສອບຕະຖາຄົດຢູ່ ຮູ້ແນວນີ້ວ່າ "ຕະຖາຄົດບໍ່ໄດ້ມີທຳທີ່ຈະຮູ້ແຈ້ງທາງຕາ ແລະ ທາງຫູອັນຜະສົມກັນ" ຈາກນັ້ນ ກໍພິຈາລະນາກວດສອບຕະຖາຄົດໃຫ້ຍິ່ງຂຶ້ນໄປວ່າ "ຕະຖາຄົດມີທຳທີ່ຈະຮູ້ທາງຕາ ແລະ ທາງຫູອັນຜ່ອງແຜ້ວຫຼືບໍ່?" ເມື່ອພິຈາລະນາກວດສອບຕະຖາຄົດນັ້ນຢູ່ກໍຈະຮູ້ແນວນີ້ວ່າ "ຕະຖາຄົດມີທຳທີ່ຈະຮູ້ແຈ້ງທາງຕາ ແລະທາງຫູອັນຜ່ອງແຜ້ວ"

ເມື່ອພິຈາລະນາກວດສອບຕະຖາຄົດຢູ່ ຮູ້ແນວນີ້ວ່າ "ຕະຖາຄົດມີທຳທີ່ຈະຮູ້ແຈ້ງທາງຕາ ແລະທາງຫູອັນຜ່ອງແຜ້ວ" ຈາກນັ້ນ ກໍພິຈາລະນາກວດສອບຕະຖາຄົດໃຫ້ຍິ່ງຂຶ້ນໄປວ່າ "ທ່ານຜູ້ນີ້ມີກຸສົນທຳນີ້ຢູ່ຕະຫຼອດເວລາ ຫຼື ມີຊົ່ວຄາວທໍ່ນັ້ນ" ເມື່ອກວດສອບຕະຖາຄົດຢູ່ກໍຈະຮູ້ແນວນີ້ວ່າ "ທ່ານຜູ້ນີ້ມີກຸສົນທຳນີ້ຢູ່ຕະຫຼອດເວລາ ບໍ່ແມ່ນວ່າມີຊົ່ວຄາວທໍ່ນັ້ນ"

ເມື່ອພິຈາລະນາກວດສອບຕະຖາຄົດຢູ່ ຮູ້ແນວນີ້ວ່າ "ທ່ານຜູ້ນີ້ມີກຸສົນທຳນີ້ຢູ່ຕະຫຼອດເວລາ ບໍ່ແມ່ນວ່າມີຊົ່ວຄາວທໍ່ນັ້ນ" ຈາກນັ້ນ ກໍພິຈາລະນາກວດສອບຕະຖາຄົດໃຫ້ຍິ່ງຂຶ້ນໄປວ່າ "ທ່ານຜູ້ນີ້ມີຊື່ສຽງ ມີຍົດ ທ່ານມີໂທດບາງຢ່າງໃນໂລກນີ້ແດ່ຫຼືບໍ່?" ຍ້ອນພິກຂຸຍັງບໍ່ມີໂທດບາງຢ່າງໃນໂລກນີ້ຊົ່ວເວລາທີ່ຕົນຍັງບໍ່ມີຊື່ສຽງ ຍັງບໍ່ມີຍົດ ແຕ່ເມື່ອມີຊື່ສຽງ ມີຍົດແລ້ວ ກໍຈະມີໂທດບາງຢ່າງໃນໂລກນີ້ຜະກົດໃຫ້ເຫັນ ພິກຂຸຜູ້ກວດສອບ ເມື່ອພິຈາລະນາກວດສອບຕະຖາຄົດນັ້ນຢູ່ກໍຈະຮູ້ແນວນີ້ວ່າ "ທ່ານຜູ້ນີ້ມີຊື່ສຽງ ມີຍົດແລ້ວ ແລະບໍ່ໄດ້ມີໂທດບາງຢ່າງໃນໂລກນີ້"

ເມື່ອພິຈາລະນາກວດສອບຕະຖາຄົດຢູ່ ຮູ້ແນວນີ້ວ່າ "ທ່ານຜູ້ນີ້ມີຊື່ສຽງ ມີຍົດແລ້ວ ແລະບໍ່ໄດ້ມີໂທດບາງຢ່າງໃນໂລກນີ້" ຈາກນັ້ນ ກໍພິຈາລະນາກວດສອບຕະຖາຄົດໃຫ້ຍິ່ງຂຶ້ນວ່າ "ທ່ານຜູ້ນີ້ບໍ່ມີໄພ ບໍ່ແມ່ນຜູ້ມີໄພ ບໍ່ເສບກາມຍ້ອນປາສະຈາກຣາຄະແລ້ວ ເນື່ອງຈາກສິ້ນຣາຄະ" ເມື່ອ

ພິຈາລະນາກວດສອບຕະຖາຄົດນັ້ນຢູ່ ກໍຈະຮູ້ແນວນີ້ວ່າ "ທ່ານຜູ້ນີ້ບໍ່ມີໄພ ບໍ່ແມ່ນຜູ້ມີໄພ ບໍ່ເສບການຍ້ອນປາສະຈາກຣາຄະແລ້ວ ເນື່ອງຈາກສິ້ນຣາຄະ"

ຫາກຊົນເຫຼົ່າອື່ນຈະເພິ່ງຖາມພິກຂຸນັ້ນວ່າ "ທ່ານມີອັນໃດ ເປັນເຄື່ອງບົ່ງຊີ້ທີ່ເປັນເຫດໃຫ້ທ່ານກ່າວວ່າ "ທ່ານຜູ້ນີ້ບໍ່ມີໄພ ບໍ່ແມ່ນຜູ້ມີໄພ ບໍ່ເສບການຍ້ອນປາສະຈາກຣາຄະແລ້ວ ເນື່ອງຈາກສິ້ນຣາຄະ"

ພິກຂຸທັງຫຼາຍ ພິກຂຸເມື່ອຈະຕອບຢ່າງຖືກຕ້ອງຄວນຕອບແນວນີ້ວ່າ "ຈິງຢ່າງນັ້ນ ບໍ່ວ່າທ່ານຜູ້ນີ້ຢູ່ໃນໝູ່ ຫຼື ຢູ່ຜູ້ດຽວ ຈະບໍ່ດູໝິ່ນໝູ່ຊົນໃນບ່ອນນັ້ນ ຜູ້ດໍາເນີນໄປດີ ດໍາເນີນໄປຊົ່ວ ສັ່ງສອນຄະນະ ລາງພວກຕິດຢູ່ໃນອາມິດໃນໂລກນີ້ ແລະ ລາງພວກບໍ່ຕິດຢູ່ໃນອາມິດໃນໂລກນີ້ ເຮົາໄດ້ສະດັບຮັບຄວາມຂໍ້ນີ້ ມາໃນບ່ອນສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ເຮົາເປັນຜູ້ບໍ່ມີໄພ ບໍ່ແມ່ນເປັນຜູ້ມີໄພ ຍ້ອນປາສະຈາກຣາຄະແລ້ວ ບໍ່ເສບການຍ້ອນປາສະຈາກຣາຄະແລ້ວ ເນື່ອງຈາກສິ້ນຣາຄະ"

## ຊົງເປີດໂອກາດໃຫ້ສອບຖາມຍິ່ງຂຶ້ນ

[໔໗໙] ພິກຂຸທັງຫຼາຍ ບັນດາພິກຂຸຜູ້ພິຈາລະນາເຫຼົ່ານັ້ນ ພິກຂຸຜູ້ພິຈາລະນາ

ອີງໜຶ່ງ ຄວນສອບຖາມຕະຖາຄົດຕໍ່ໄປວ່າ "ຕະຖາຄົດມີທໍາທີ່ຈະຮູ້ແຈ້ງທາງຕາແລະທາງຫູ ອັນເສົ້າໝອງຫຼືບໍ່" ຕະຖາຄົດເມື່ອຕອບກໍຈະເພິ່ງຕອບແນວນີ້ວ່າ "ຕະຖາຄົດບໍ່ໄດ້ມີທໍາທີ່ຈະຮູ້ແຈ້ງທາງຕາແລະທາງຫູອັນເສົ້າໝອງ"

ຄວນສອບຖາມຕະຖາຄົດໃຫ້ຍິ່ງຂຶ້ນໄປວ່າ "ຕະຖາຄົດມີທໍາທີ່ຈະຮູ້ແຈ້ງທາງຕາແລະທາງຫູອັນຜະສົມກັນຫຼືບໍ່" ຕະຖາຄົດເມື່ອຕອບກໍຈະເພິ່ງຕອບແນວນີ້ວ່າ "ຕະຖາຄົດບໍ່ໄດ້ມີທໍາ ທີ່ຈະຮູ້ແຈ້ງທາງຕາແລະທາງຫູອັນຜະສົມກັນ"

ຄວນສອບຖາມຕະຖາຄົດໃຫ້ຍິ່ງຂຶ້ນໄປວ່າ "ຕະຖາຄົດມີທໍາທີ່ຈະຮູ້ແຈ້ງທາງຕາແລະທາງຫູອັນຜ່ອງແຜ້ວຫຼືບໍ່?" ຕະຖາຄົດເມື່ອຕອບກໍຈະເພິ່ງຕອບແນວນີ້ວ່າ "ຕະຖາຄົດມີທໍາທີ່ຈະຮູ້ແຈ້ງທາງຕາແລະທາງຫູອັນຜ່ອງແຜ້ວ" ເຮົາເປັນຜູ້ມີທໍາທີ່ຜ່ອງແຜ້ວນັ້ນເປັນທາງ ເປັນທີ່ໂຄຈອນ ຍ້ອນເຫດນັ້ນ ເຮົາຈຶ່ງເປັນຜູ້ບໍ່ມີຕັນຫາ"

ສາວົກຄວນຈະເຂົ້າໄປຫາສາດສະດາຜູ້ມີວາທະຢ່າງນີ້ ເພື່ອຟັງທໍາ ສາດສະດາກໍຈະສະແດງທໍາທີ່ສູງຍິ່ງຂຶ້ນ ແລະ ປະນີດຍິ່ງຂຶ້ນ ທັງທີ່ເປັນສ່ວນດໍາແລະສ່ວນຂາວແກ່ສາວົກນັ້ນ

ສາດສະດາກໍສະແດງທໍາທີ່ສູງຍິ່ງຂຶ້ນ ແລະ ປະນີດຍິ່ງຂຶ້ນ ທັງທີ່ເປັນສ່ວນດໍາແລະສ່ວນ

ຂາວແກ່ພິກຂຸໂດຍປະການໃດ ພິກຂຸນັ້ນ ຮູ້ຍິ່ງເຊິ່ງທຳບາງຢ່າງໃນທຳນັ້ນໂດຍປະການນັ້ນ ເຖິງຄວາມຕົກລົງໃຈໃນທຳທັງຫຼາຍ ກໍຈະເຫຼື້ອມໃສໃນສາດສະດາວ່າ "ພຣະຜູ້ມີພຣະພາກເຈົ້າເປັນພຣະສຳມາສຳພຸດທະເຈົ້າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງເປັນຜູ້ປະຕິບັດດີແລ້ວ"

ຫາກຊົນເຫຼົ່າອື່ນ ເພິ່ງສອບຖາມພິກຂຸນັ້ນ ອີກແນວນີ້ວ່າ "ທ່ານມີອັນໃດເປັນເຄື່ອງບົ່ງຊີ້ທີ່ເປັນເຫດໃຫ້ທ່ານກ້າກ່າວແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ເປັນພຣະສຳມາສຳພຸດທະເຈົ້າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງເປັນຜູ້ປະຕິບັດດີແລ້ວ"

ພິກຂຸທັງຫຼາຍ ພິກຂຸນັ້ນ ເມື່ອຈະຕອບຢ່າງຖືກຕ້ອງກໍຄວນຕອບແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫຼາຍ ເຮົາເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບເພື່ອຟັງທຳ ພຣະຜູ້ມີພຣະພາກກໍຊົງສະແດງທຳທີ່ສູງຍິ່ງຂຶ້ນ ແລະ ປະນີດຍິ່ງຂຶ້ນທັງທີ່ເປັນສ່ວນດຳ ແລະ ສ່ວນຂາວແກ່ເຮົານັ້ນພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳທີ່ສູງຍິ່ງຂຶ້ນ ແລະ ປະນີດຍິ່ງຂຶ້ນທັງທີ່ເປັນສ່ວນດຳແລະສ່ວນຂາວແກ່ເຮົາໂດຍປະການໃດ ເຮົາກໍຮູ້ຍິ່ງເຊິ່ງທຳບາງຢ່າງໃນທຳນັ້ນໂດຍປະການນັ້ນ ເຖິງຄວາມຕົກລົງໃຈໃນທຳທັງຫຼາຍ ກໍຈະເຫຼື້ອມໃສໃນພຣະສາດສະດາວ່າ "ພຣະຜູ້ມີພຣະພາກເຈົ້າເປັນພຣະສຳມາສຳພຸດທະເຈົ້າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດດີໄວ້ແລ້ວ ພຣະສົງເປັນຜູ້ປະຕິບັດດີແລ້ວ"

[໔໙໐] ພິກຂຸທັງຫຼາຍ ສັດທາຂອງບຸກຄົນໃດບຸກຄົນໜຶ່ງ ຕັ້ງໝັ້ນແລ້ວໃນຕະຖາຄົດມີມູນມີທີ່ອາໄສ ດ້ວຍອາການເຫຼົ່ານີ້ ດ້ວຍພະຍັນຊະນະເຫຼົ່ານີ້ ສັດທານີ້ເຮົາກ່າວວ່າ ມີເຫດ ມີທັດສະນະເປັນມູນ ໝັ້ນຄົງ ເຊິ່ງສະມະນະພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກບໍ່ສາມາດເຮັດໃຫ້ຫວັ່ນໄຫວໄດ້

ພິກຂຸທັງຫຼາຍ ການກວດສອບທຳໃນຕະຖາຄົດ ຍ່ອມມີຢ່າງນີ້ ຕະຖາຄົດເປັນຜູ້ທີ່ພິກຂຸພິຈາລະນາກວດສອບດີແລ້ວ ໂດຍທຳຢ່າງນີ້ແລ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ວີມັງສະກະສູດທີ ໗ ຈົບ**

# ໗. ໂກສຳພິຍະສູດ

## ວ່າດ້ວຍພິກຂຸຊາວເມືອງໂກສຳພີ

## ພິກຂຸຊາວເມືອງໂກສຳພີຜິດຖຽງກັນ

[໔໗໑] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນ ພວກພິກຂຸໃນນະຄອນໂກສຳພີຕ່າງບາດໝາງກັນ ວິວາດ ຜິດຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ບໍ່ທຳຄວາມເຂົ້າໃຈກັນ ບໍ່ປາຖະໜາປັບຄວາມເຂົ້າໃຈກັນ ບໍ່ທຳຄວາມປອງດອງກັນ ບໍ່ປາຖະໜາຄວາມປອງດອງກັນ

ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງໃນທີ່ສົມຄວນໄດ້ຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ພິກຂຸທັງຫຼາຍໃນນະຄອນໂກສຳພີຕ່າງບາດໝາງກັນ ວິວາດ ຜິດຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ບໍ່ທຳຄວາມເຂົ້າໃຈກັນ ບໍ່ປາຖະໜາປັບຄວາມເຂົ້າໃຈກັນ ບໍ່ທຳຄວາມປອງດອງກັນ ບໍ່ປາຖະໜາຄວາມປອງດອງກັນ”

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ “ມາເທີ້ນ ພິກຂຸ ທ່ານຈົ່ງຮຽກພິກຂຸເຫຼົ່ານັ້ນ ມາຕາມຄຳຂອງເຮົາວ່າ “ພຣະສາດສະດາຕັດຮຽກທ່ານທັງຫຼາຍ” ພິກຂຸອົງນັ້ນ ທູນຮັບສະໜອງພຣະດຳຣັດແລ້ວເຂົ້າໄປຫາພິກຂຸເຫຼົ່ານັ້ນເຖິງທີ່ຢູ່ ແລ້ວໄດ້ກ່າວວ່າ “ພຣະສາດສະດາຕັດຮຽກທ່ານທັງຫຼາຍ”

ພິກຂຸເຫຼົ່ານັ້ນ ຮັບຄຳພິກຂຸນັ້ນແລ້ວ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ນັ່ງຢູ່ໃນບ່ອນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມພິກຂຸເຫຼົ່ານັ້ນວ່າ “ພິກຂຸທັງຫຼາຍ ໄດ້ຍິນວ່າ ທ່ານທັງຫຼາຍຕ່າງບາດໝາງກັນ ວິວາດ ຜິດຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ບໍ່ທຳຄວາມເຂົ້າໃຈກັນ ບໍ່ປາຖະໜາປັບຄວາມເຂົ້າໃຈກັນ ບໍ່ທຳຄວາມປອງດອງກັນ ບໍ່ປາຖະໜາຄວາມປອງດອງກັນ ແມ່ນບໍ?”

ພິກຂຸເຫຼົ່ານັ້ນທູນຕອບວ່າ “ເປັນຄວາມຈິງ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນັ້ນວ່າຢ່າງໃດ ສະໄໝໃດ ທ່ານທັງຫຼາຍຕ່າງບາດໝາງກັນ ວິວາດ ຜິດຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ສະໄໝນັ້ນ ທ່ານທັງຫຼາຍຕັ້ງໝັ້ນເມດຕາກາຍຍະກຳ ຕັ້ງໝັ້ນເມດຕາວະຈີກຳ ແລະຕັ້ງໝັ້ນເມດຕາມະໂນກຳໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງແດ່ຫຼືບໍ່?"

ພິກຂຸເຫຼົ່ານັ້ນ ຂາບທູນວ່າ "ຂໍ້ນີ້ບໍ່ເປັນດັ່ງນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ໄດ້ຍິນວ່າ ສະໄໝໃດ ທ່ານທັງຫຼາຍຕ່າງບາດໝາງກັນ ວິວາດ ຜິດຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ສະໄໝນັ້ນ ທ່ານທັງຫຼາຍກໍບໍ່ຕັ້ງໝັ້ນເມດຕາກາຍຍະກຳ ບໍ່ຕັ້ງໝັ້ນເມດຕາວະຈີກຳ ແລະ ບໍ່ຕັ້ງໝັ້ນເມດຕາມະໂນກຳໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າ ແລະ ລັບຫຼັງ

ໂມຄະບຸລຸດທັງຫຼາຍ ເມື່ອເປັນດັ່ງນີ້ ທ່ານທັງຫຼາຍຮູ້ອັນໃດ ເຫັນອັນໃດ ຈຶ່ງຕ່າງບາດໝາງກັນ ວິວາດ ຜິດຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ບໍ່ທຳຄວາມເຂົ້າໃຈກັນ ບໍ່ປາຖະໜາປັບຄວາມເຂົ້າໃຈກັນ ບໍ່ທຳຄວາມປອງດອງກັນ ບໍ່ປາຖະໜາຄວາມປອງດອງກັນຢູ່

ໂມຄະບຸລຸດທັງຫຼາຍ ຂໍ້ນັ້ນ ຈັກມີເພື່ອສິ່ງທີ່ບໍ່ເປັນປະໂຫຍດ ເພື່ອຄວາມທຸກ ແກ່ທ່ານທັງຫຼາຍຕະຫຼອດການລະນານ"

## ສາຣານີຍະທຳ ໖ ປະການ

[໔໙໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ສາຣານີຍະທຳ (ທຳເປັນເຫດໃຫ້ຣະນຶກເຖິງກັນ) ໖ ປະການນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

ສາຣານີຍະທຳ ໖ ປະການ ອັນໃດແນ

ຄື ພິກຂຸໃນທຳວິໄນນີ້

໑. ຕັ້ງໝັ້ນເມດຕາກາຍຍະກຳ ໃນເພື່ອນພົມມະຈາຣີທັງຫຼາຍທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໒. ຕັ້ງໝັ້ນເມດຕາວະຈີກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໓. ຕັ້ງໝັ້ນເມດຕາມະໂນກຳ ໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໔. ບໍຣິໂພກໂດຍບໍ່ແບ່ງແຍກ ລາບທັງຫຼາຍທີ່ປະກອບດ້ວຍທຳ ໄດ້ມາໂດຍທຳ ໂດຍທີ່ສຸດແມ່ນພຽງບິນທະບາດ ບໍຣິໂພກຮ່ວມກັບເພື່ອນພົມຈາຣີທັງຫຼາຍຜູ້ມີສີນທັງຕໍ່ໜ້າ ແລະ ລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໕. ເປັນຜູ້ມີສີນບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ພ້ອຍ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໖. ເປັນຜູ້ມີທິດຖິໂດຍທິດຖິອັນປະເສີດ ເປັນນິຍະຍານິກະທຳ ເພື່ອຄວາມສິ້ນທຸກໂດຍຊອບແກ່ຜູ້ເຮັດຕາມ ສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ສາຣານີຍະທຳແມ່ນນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

ພິກຂຸທັງຫຼາຍ ສາຣານີຍະທຳ ໖ ປະການນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ ທິດຖິອັນໄກຈາກກິເລດທີ່ເປັນຂ້າເສິກ ເປັນນິຍະຍານິກະທຳນຳ ບຸກຄົນຜູ້ເຮັດຕາມນັ້ນ ອອກໄປ ເພື່ອຄວາມສິ້ນທຸກໂດຍຊອບ ນີ້ເປັນທຳຊັ້ນຍອດທີ່ຢຶດຄຸມສາຣານີຍະທຳ ໖ ປະການນີ້ໄວ້

ພິກຂຸທັງຫຼາຍ ຍອດທຳເປັນສ່ວນສູງສຸດເປັນທີ່ຢຶດຄຸມເຮືອນຍອດ ແມ່ນສັນໃດ ທິດຖິອັນໄກຈາກກິເລດທີ່ເປັນຂ້າເສິກ ເປັນນິຍະຍານິກະທຳນຳບຸກຄົນຜູ້ເຮັດຕາມນັ້ນອອກໄປ ເພື່ອຄວາມສິ້ນທຸກໂດຍຊອບນີ້ ກໍຄືກັນສັນນັ້ນ ເປັນທຳຊັ້ນຍອດທີ່ຢຶດຄຸມສາຣານີຍະທຳ ໖ ປະການນີ້ໄວ້

## ທິດຖິຄືຍານຂອງອະຣິຍະສາວົກ ໗ ປະການ

[໔໙໓] ທິດຖິອັນປະເສີດ ເປັນນິຍະຍານິກະທຳ ເພື່ອຄວາມສິ້ນທຸກໂດຍຊອບ ແກ່ຜູ້ເຮັດຕາມສະເໝີກັນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຢູ່ໃນປ່າກໍດີ ຢູ່ທີ່ເຫງົ້າໄມ້ກໍດີ ຢູ່ໃນເຮືອນວ່າງກໍດີ ຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ເຮົາມີຈິດອັນປຣິຍຸດຖານກິເລດ (ກິເລດເປັນເຄື່ອງຄອບງຳ) ໃດຄອບງຳແລ້ວ ບໍ່ເພິ່ງຮູ້ເຫັນຕາມຄວາມເປັນຈິງ ປຣິຍຸດຖານກິເລດນັ້ນ ທີ່ເຮົາຍັງລະບໍ່ໄດ້ໃນພາຍໃນມີຢູ່ບໍ?"

ຖ້າພິກຂຸມີຈິດຖືກກາມລາຄະຄອບງຳ ກໍຊື່ວ່າ ມີຈິດຖືກປຣິຍຸດຖານກິເລດຄອບງຳແລ້ວ ມີຈິດຖືກພະຍາບາດຄອບງຳ ກໍຊື່ວ່າ ມີຈິດຖືກປຣິຍຸດຖານກິເລດຄອບງຳແລ້ວ ມີຈິດຖືກຖີນະມິດທະຄອບງຳ ກໍຊື່ວ່າ ມີຈິດຖືກປຣິຍຸດຖານກິເລດຄອບງຳແລ້ວ ມີຈິດຖືກອຸດທັດຈະກຸກກຸດຈະຄອບງຳ ກໍຊື່ວ່າ ມີຈິດຖືກປຣິຍຸດຖານກິເລດຄອບງຳແລ້ວ ມີຈິດຖືກວິຈິກິດສາຄອບງຳ ກໍຊື່ວ່າມີຈິດຖືກປຣິຍຸດຖານກິເລດຄອບງຳແລ້ວ ມີຄວາມຂົນຂວາຍໃນການຄິດເລື້ອງໂລກນີ້ ກໍຊື່ວ່າມີຈິດຖືກປຣິຍຸດຖານກິເລດຄອບງຳແລ້ວ ມີຄວາມຂົນຂວາຍໃນການຄິດເລື້ອງໂລກໜ້າ ກໍຊື່ວ່າມີຈິດຖືກປຣິຍຸດຖານກິເລດຄອບງຳແລ້ວ

ພິກຂຸທັງຫຼາຍ ຖ້າພິກຂຸໝາງໃຈກັນ ວິວາດ ຜິດຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ກໍຊື່ວ່າ ມີຈິດຖືກປຣິຍຸດຖານກິເລດຄອບງຳແລ້ວ ທ່ານຍ່ອມຮູ້ແຈ້ງແນວນີ້ວ່າ "ເຮົາມີຈິດຖືກປຣິຍຸດຖານກິເລດໃດຄອບງຳແລ້ວ ບໍ່ເພິ່ງຮູ້ເຫັນຕາມຄວາມເປັນຈິງ ປຣິຍຸດຖານກິເລດນັ້ນທີ່ເຮົາຍັງລະບໍ່ໄດ້ໃນພາຍໃນ ບໍ່ໄດ້ມີເລີຍ ເຮົາຕັ້ງຈິດໄວ້ດີແລ້ວ ເພື່ອຕັດສະຮູ້ສັດຈະທັງຫຼາຍ"

ນີ້ຄືຍານທີ ໑ ທີ່ເປັນອະຣິຍະ ເປັນໂລກຸດຕະຣະ ບໍ່ທົ່ວໄປແກ່ປຸຖຸຊົນທັງຫຼາຍ ເຊິ່ງພິກຂຸນັ້ນບັນລຸແລ້ວ

[໔໗໔] ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ "ເຮົາເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງທິດຖິນີ້ ກໍໄດ້ຄວາມສະງົບສະເພາະຕົນ ກໍໄດ້ຄວາມດັບກິເລດສະເພາະຕົນບໍ" ອະຣິຍະສາວົກນັ້ນກໍຮູ້ແຈ້ງແນວນີ້ວ່າ "ເຮົາເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງທິດຖິນີ້ ກໍໄດ້ຄວາມສະງົບສະເພາະຕົນ ກໍໄດ້ຄວາມດັບກິເລດສະເພາະຕົນ"

ນີ້ຄື ຍານທີ ໔ ທີ່ເປັນອະຣິຍະ ເປັນໂລກຸດຕະຣະ ບໍ່ທົ່ວໄປແກ່ປຸຖຸຊົນທັງຫຼາຍ ເຊິ່ງອະຣິຍະສາວົກນັ້ນບັນລຸແລ້ວ

[໔໗໕] ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ "ເຮົາມີທິດຖິເຊັ່ນໃດ ສະມະນະຫຼືພາມອື່ນນອກທຳວິໄນນີ້ຜູ້ມີທິດຖິເຊັ່ນນັ້ນມີຢູ່ບໍ?" ອະຣິຍະສາວົກນັ້ນ ກໍຮູ້ແຈ້ງແນວນີ້ວ່າ "ເຮົາມີທິດຖິເຊັ່ນໃດ ສະມະນະຫຼືພາມອື່ນນອກທຳວິໄນນີ້ ຜູ້ມີທິດຖິເຊັ່ນນັ້ນ ບໍ່ໄດ້ມີ"

ນີ້ຄືຍານທີ ໕ ທີ່ເປັນອະຣິຍະ ເປັນໂລກຸດຕະຣະ ບໍ່ທົ່ວໄປແກ່ປຸຖຸຊົນທັງຫຼາຍ ເຊິ່ງອະຣິຍະສາວົກນັ້ນບັນລຸແລ້ວ

[໔໙ຜ] ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ "ບຸກຄົນຜູ້ມີທິດຖິ ເປັນຜູ້ມີສະພາບເຊັ່ນໃດ ເຖິງເຮົາກໍມີສະພາບເຊັ່ນນັ້ນ"

ບຸກຄົນຜູ້ມີທິດຖິ ເປັນຜູ້ມີສະພາບແນວໃດ

ພິກຂຸທັງຫຼາຍ ບຸກຄົນຜູ້ມີທິດຖິ ເປັນຜູ້ມີສະພາບແນວນີ້ ຄື ການອອກຈາກອາບັດ ເຊັ່ນໃດຍ່ອມຜາກົດ ອະຣິຍະສາວົກຕ້ອງອາບັດເຊັ່ນນັ້ນກໍຟ້າວສະແດງ ເປີດເຜີຍ ເຮັດໃຫ້ຊັດເຈນອາບັດນັ້ນໃນສຳນັກສາດສະດາ ຫຼື ເພື່ອນພົມມະຈາຣີທີ່ເປັນວິນຍູຊົນທັງຫຼາຍ ເມື່ອສະແດງເປີດເຜີຍ ເຮັດໃຫ້ຊັດເຈນແລ້ວກໍສັງລວມລະວັງຕໍ່ໄປ ເດັກອ່ອນທີ່ນອນຫງາຍ ມືຫຼືຕີນຖືກຖ່ານໄຟແລ້ວກໍດຶງມືຫຼືຕີນກັບທັນທີ ແມ່ນສັນໃດ ບຸກຄົນຜູ້ມີທິດຖິກໍຄືກັນສັນນັ້ນ ເປັນຜູ້ມີສະພາບຢ່າງນີ້ຄື ການອອກຈາກອາບັດເຊັ່ນໃດຍ່ອມຜາກົດ ອະຣິຍະສາວົກຕ້ອງອາບັດເຊັ່ນນັ້ນ ກໍຟ້າວສະແດງ ເປີດເຜີຍ ເຮັດໃຫ້ຊັດເຈນອາບັດນັ້ນໃນສຳນັກສາດສະດາ ຫຼື ເພື່ອນພົມມະຈາຣີທີ່ເປັນວິນຍູຊົນທັງຫຼາຍ ເມື່ອສະແດງ ເປີດເຜີຍ ເຮັດໃຫ້ຊັດເຈນແລ້ວກໍສັງລວມລະວັງຕໍ່ໄປ ອະຣິຍະສາວົກນັ້ນກໍຮູ້ແຈ້ງແນວນີ້ວ່າ "ບຸກຄົນຜູ້ມີທິດຖິ ເປັນຜູ້ມີສະພາບເຊັ່ນໃດ ເຖິງເຮົາກໍມີສະພາບເຊັ່ນນັ້ນ"

ນີ້ຄື ຍານທີ ໔ ທີ່ເປັນອະຣິຍະ ເປັນໂລກຸດຕະຣະ ບໍ່ທົ່ວໄປແກ່ປຸຖຸຊົນທັງຫຼາຍ ເຊິ່ງອະຣິຍະສາວົກນັ້ນບັນລຸແລ້ວ

[໔໙ກ] ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ "ບຸກຄົນຜູ້ມີທິດຖິ ເປັນຜູ້ມີສະພາບເຊັ່ນໃດ ເຖິງເຮົາກໍມີສະພາບເຊັ່ນນັ້ນ"

ບຸກຄົນຜູ້ມີທິດຖິ ເປັນຜູ້ມີສະພາບແນວໃດ?

ພິກຂຸທັງຫຼາຍ ບຸກຄົນຜູ້ມີທິດຖິ ເປັນຜູ້ມີສະພາບແນວນີ້ ຄື ອະຣິຍະສາວົກມີຄວາມຂົນຂວາຍໃນກິດອັນໃດ ທັງນ້ອຍໃຫຍ່ທີ່ຄວນເຮັດຂອງເພື່ອນພົມມະຈາຣີໂດຍແທ້ ເຖິງແນວນັ້ນຄວາມປາຖະໜາອັນແຮງກ້າໃນອະທິສີນສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາຂອງອະຣິຍະສາວົກນັ້ນມີຢູ່ ງົວແມ່ລູກອ່ອນ ເມື່ອເລັມຫຍ້າຢູ່ ມັກທອດສາຍຕາຫຼຽວເບິ່ງລູກໄປພ້ອມແມ່ນສັນໃດ ບຸກຄົນຜູ້ມີທິດຖິກໍຄືກັນສັນນັ້ນ ເປັນຜູ້ມີສະພາບແນວນີ້ ຄື ອະຣິຍະສາວົກມີຄວາມຂົນຂວາຍໃນກິດອັນໃດ ທັງນ້ອຍໃຫຍ່ທີ່ຄວນເຮັດຂອງເພື່ອນພົມມະຈາຣີໂດຍແທ້ ເຖິງແນວນັ້ນຄວາມປາຖະໜາອັນແຮງກ້າໃນອະທິສີນສິກຂາ ອະທິຈິດຕະສິກຂາ ແລະ ອະທິປັນຍາສິກຂາຂອງອະຣິຍະສາວົກນັ້ນມີຢູ່ ອະຣິຍະສາວົກນັ້ນ ກໍຮູ້ແຈ້ງແນວນີ້ວ່າ "ບຸກຄົນຜູ້ມີທິດຖິເປັນຜູ້ມີສະພາບເຊັ່ນໃດ ເຖິງເຮົາກໍມີສະພາບເຊັ່ນນັ້ນ"

ນີ້ຄື ຍານທີ ໕ ທີ່ເປັນອະຣິຍະ ເປັນໂລກຸດຕະຣະ ບໍ່ທົ່ວໄປແກ່ປຸຖຸຊົນທັງຫຼາຍ ເຊິ່ງອະຣິຍະສາວົກນັ້ນບັນລຸແລ້ວ

[໔໙໘] ອະຣິຍະສາວິກາພິຈາລະນາເຫັນດັ່ງນີ້ວ່າ "ບຸກຄົນຜູ້ມີທິດຖິ ເປັນຜູ້ມີພະລະເຊັ່ນໃດ ເຖິງເຮົາກໍມີພະລະເຊັ່ນນັ້ນ"

ບຸກຄົນຜູ້ມີທິດຖິນັ້ນ ເປັນຜູ້ມີພະລະແນວໃດ?

ພິກຂຸທັງຫຼາຍ ບຸກຄົນຜູ້ມີທິດຖິ ເປັນຜູ້ມີພະລະແນວນີ້ ຄື ເມື່ອບັນດິດສະແດງທຳວິໄນທີ່ຕະຖາຄົດປະກາດແລ້ວ ອະຣິຍະສາວິການັ້ນ ສົນໃຈ ໃສ່ໃຈ ກຳນົດດ້ວຍຈິດທັງປວງແລ້ວງ່ຽງໂສຕະຟັງທຳ ອະຣິຍະສາວິການັ້ນ ກໍຮູ້ແຈ້ງແນວນີ້ວ່າ "ບຸກຄົນຜູ້ມີທິດຖິ ເປັນຜູ້ມີພະລະເຊັ່ນໃດ ເຖິງເຮົາກໍມີພະລະເຊັ່ນນັ້ນ"

ນີ້ຄື ຍານທີ ໖ ທີ່ເປັນອະຣິຍະ ເປັນໂລກຸດຕະຣະ ບໍ່ທົ່ວໄປແກ່ປຸຖຸຊົນທັງຫຼາຍ ເຊິ່ງອະຣິຍະສາວິການັ້ນບັນລຸແລ້ວ

[໔໙໙] ອະຣິຍະສາວິກາພິຈາລະນາເຫັນດັ່ງນີ້ວ່າ "ບຸກຄົນຜູ້ມີທິດຖິ ເປັນຜູ້ມີພະລະເຊັ່ນໃດ ເຖິງເຮົາກໍມີພະລະເຊັ່ນນັ້ນ"

ບຸກຄົນຜູ້ມີທິດຖິ ເປັນຜູ້ມີພະລະແນວໃດ?

ພິກຂຸທັງຫຼາຍ ບຸກຄົນຜູ້ມີທິດຖິ ເປັນຜູ້ມີພະລະແນວນີ້ ຄື ເມື່ອບັນດິດສະແດງທຳວິໄນທີ່ຕະຖາຄົດປະກາດແລ້ວ ອະຣິຍະສາວິການັ້ນ ໄດ້ຄວາມຮູ້ແຈ້ງອັດຖະ ໄດ້ຄວາມຮູ້ແຈ້ງທຳ ແລະໄດ້ຄວາມປາໂມດໃນທຳ ອະຣິຍະສາວິການັ້ນກໍຮູ້ແຈ້ງແນວນີ້ວ່າ "ບຸກຄົນຜູ້ມີທິດຖິ ເປັນຜູ້ມີພະລະເຊັ່ນໃດ ເຖິງເຮົາກໍມີພະລະເຊັ່ນນັ້ນ"

ນີ້ຄື ຍານທີ ໗ ທີ່ເປັນອະຣິຍະ ເປັນໂລກຸດຕະຣະ ບໍ່ທົ່ວໄປແກ່ປຸຖຸຊົນທັງຫຼາຍ ເຊິ່ງອະຣິຍະສາວິການັ້ນບັນລຸແລ້ວ

[໕໐໐] ພິກຂຸທັງຫຼາຍ ອະຣິຍະສາວິກປະກອບດ້ວຍທຳ ໗ ປະການນີ້ ກວດສອບສະພາວະທຳດີແລ້ວ ດ້ວຍການເຮັດໃຫ້ແຈ້ງໂສດາປັດຕິຜົນແນວນີ້ ອະຣິຍະສາວິກຜູ້ປະກອບດ້ວຍທຳ ໗ ປະການນີ້ ຍ່ອມເປັນຜູ້ພຽບພ້ອມດ້ວຍໂສດາປັດຕິຜົນແລ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ໂກສຳພິຍະສູດທີ ໘ ຈົບ**

# ໙. ພົມນິມັນຕະນິກະສູດ

## ວ່າດ້ວຍການເຊື້ອເຊີນຂອງພົມ

[໕໐໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພາກປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ສະໄໝໜຶ່ງ ເຮົາຢູ່ທີ່ໂຄນຕົ້ນສາລະໃຫຍ່ໃນສຸພະຄະວັນ ໃກ້ເມືອງອຸກກັດຖາ ໃນສະໄໝນັ້ນ ພະກະພົມມີທິດຖິຊົ່ວແນວນີ້ເກີດຂຶ້ນວ່າ "ພົມມະສະຖານ[໑]ນີ້ທ່ຽງແທ້ ໝັ້ນຍືນ ໝັ້ນຄົງ ແຂງແຮງ ມີຄວາມບໍ່ເຄື່ອນໄປເປັນທຳມະດາ ພົມມະສະຖານນີ້ ບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດ ກໍແລ ເຫດເຄື່ອງກຳຈັດອອກຈາກທຸກຢ່າງຍິ່ງ ນອກຈາກພົມມະສະຖານນີ້ບໍ່ມີ" ຄັ້ງນັ້ນ ເຮົາຮູ້ຄວາມຄິດຄຳນຶງຂອງພະກະພົມດ້ວຍໃຈແລ້ວ ຈຶ່ງອັນຕະຣະທານຈາກເຫງົ້າຕົ້ນສາລະໃຫຍ່ໃນສຸພະຄະວັນໃກ້ເມືອງອຸກກັດຖາ ໄປຜາກົດໃນພົມມະໂລກນັ້ນ ປຽບເໝືອນຄົນແຂງແຮງຢຽດແຂນອອກ ຫຼືຄູ້ແຂນເຂົ້າສັນນັ້ນ ພະກະພົມໄດ້ເຫັນເຮົາຜູ້ມາແຕ່ໄກ ແລ້ວໄດ້ກ່າວກັບເຮົາວ່າ "ທ່ານຜູ້ນິຣະທຸກ ເຊີນສະເດັດມາເທີ້ນ ຂ້ານ້ອຍ ພຣະອົງໄດ້ກ່າວວ່າ "ຈະມາບ່ອນນີ້ດົນມາແລ້ວ ທ່ານຜູ້ນິຣະທຸກ ພົມມະສະຖານນີ້ ທ່ຽງ ໝັ້ນຍືນ ໝັ້ນຄົງ ແຂງແຮງ ມີຄວາມບໍ່ເຄື່ອນໄປເປັນທຳມະດາ ພົມມະສະຖານນີ້ ບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດ ກໍແລ ການກຳຈັດອອກຈາກທຸກຢ່າງຍິ່ງ ນອກຈາກພົມມະສະຖານນີ້ບໍ່ມີອີກແລ້ວ"

ພິກຂຸທັງຫຼາຍ ເມື່ອພະກະພົມກ່າວແນວນີ້ແລ້ວ ເຮົາໄດ້ກ່າວກັບພະກະພົມວ່າ "ພະກະພົມຜູ້ຈະເລີນຕົກຢູ່ໃນອຳນາດອະວິດຊາແລ້ວນໍ ພະກະພົມຜູ້ຈະເລີນຕົກຢູ່ໃນອຳນາດອະວິດຊາແລ້ວນໍ ຍ້ອນວ່າພະກະພົມກ່າວສິ່ງທີ່ບໍ່ທ່ຽງວ່າ "ທ່ຽງ" ກ່າວສິ່ງທີ່ບໍ່ໝັ້ນຍືນວ່າ "ໝັ້ນຍືນ" ກ່າວສິ່ງທີ່ບໍ່ໝັ້ນຄົງວ່າ "ໝັ້ນຄົງ" ກ່າວສິ່ງທີ່ບໍ່ແຂງແຮງວ່າ "ແຂງແຮງ" ກ່າວສິ່ງທີ່ມີຄວາມເຄື່ອນໄປເປັນທຳມະດາວ່າ "ມີຄວາມບໍ່ເຄື່ອນໄປເປັນທຳມະດາ" ກໍແລ ສັດເກີດ ແກ່ ຕາຍ ຈຸຕິ ແລະອຸບັດຢູ່ໃນພົມສະຖານໃດ ພະກະພົມກ່າວພົມສະຖານນັ້ນວ່າ "ພົມສະຖານນີ້ບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດ ແລະ ກ່າວການກຳຈັດອອກຈາກທຸກຢ່າງຍິ່ງປະການອື່ນບໍ່ມີອີກແລ້ວ"

## ມານເຂົ້າສິງກາຍພົມ

[໕໐໘] ພິກຂຸທັງຫຼາຍ ຄັ້ງນັ້ນ ມານໃຈບາບເຂົ້າສິງກາຍພົມປາຣິສັດຊະຜູ້ໜຶ່ງ ແລ້ວກ່າວກັບເຮົາວ່າ "ພິກຂຸ ພິກຂຸ ຢ່າຮຸກຮານພະກະພົມນີ້ເລີຍ ຢ່າຮຸກຮານພະກະພົມນີ້ເລີຍ ຍ້ອນວ່າພົມຜູ້ນີ້ເປັນມະຫາພົມ ເປັນໃຫຍ່ ຄະນະພົມຝ່າຝືນບໍ່ໄດ້ ໂດຍແທ້ຈິງແທ້ ເປັນຜູ້ຮູ້ທົ່ວເຖິງ ຍັງສັບພະສັດໃຫ້ເປັນໄປໃນອຳນາດ ເປັນອິດສະຫຼະ ເປັນຜູ້ສ້າງໂລກ ນິຣະມິດໂລກ ເປັນຜູ້ປະເສີດ ເປັນຜູ້ແຕ່ງສັດ ເປັນຜູ້ໃຊ້ອຳນາດ ເປັນບິດາຂອງເຫຼົ່າສັດທີ່ເກີດແລ້ວ ແລະທີ່ກຳລັງຈະເກີດ ສະມະນະພາມພວກກ່ອນທ່ານ ເປັນຜູ້ຕິຕຽນດິນ ກຽດຊັງດິນ ເປັນຜູ້ຕິຕຽນນ້ຳ ກຽດຊັງນ້ຳ ເປັນຜູ້ຕິຕຽນໄຟ ກຽດຊັງໄຟ ເປັນຜູ້ຕິຕຽນລົມ ກຽດຊັງລົມ ເປັນຜູ້ຕິຕຽນສັດ ກຽດຊັງສັດ ເປັນຜູ້ຕິຕຽນເທວະດາ ກຽດຊັງເທວະດາ ເປັນຜູ້ຕິຕຽນ ປະຊາບໍດີ ກຽດຊັງປະຊາບໍດີ ເປັນຜູ້ຕິຕຽນພົມ ກຽດຊັງພົມໃນໂລກ ຫຼັງຈາກຕາຍແລ້ວ ສະມະນະພາມເຫຼົ່ານັ້ນ ຈະໄປເກີດໃນພວກທີ່ຊົ່ວ

ສ່ວນສະມະນະພາມພວກກ່ອນທ່ານ ເປັນຜູ້ສັນເສີນດິນ ຊົມເຊີຍດິນ ເປັນຜູ້ສັນເສີນນ້ຳ ຊົມເຊີຍນ້ຳ ເປັນຜູ້ສັນເສີນໄຟ ຊົມເຊີຍໄຟ ເປັນຜູ້ສັນເສີນລົມ ຊົມເຊີຍລົມ ເປັນຜູ້ສັນເສີນສັດ ຊົມເຊີຍສັດ ເປັນຜູ້ສັນເສີນເທວະດາ ຊົມເຊີຍເທວະດາ ເປັນຜູ້ສັນເສີນປະຊາບໍດີ ຊົມເຊີຍປະຊາບໍດີ ເປັນຜູ້ສັນເສີນພົມ ຊົມເຊີຍພົມ ຫຼັງຈາກຕາຍແລ້ວ ສະມະນະພາມເຫຼົ່ານັ້ນ ຈະໄປເກີດໃນພວກທີ່ດີ

ຍ້ອນເຫດນັ້ນ ເຮົາຈຶ່ງບອກກັບທ່ານວ່າ "ທ່ານຜູ້ນິຣະທຸກ ເຊີນເທີ້ນ ທ່ານຈົ່ງເຮັດຕາມຄຳທີ່ພົມບອກແກ່ທ່ານທໍ່ນັ້ນ ທ່ານຈົ່ງຢ່າຝ່າຝືນຄຳຂອງພົມເລີຍ ຖ້າທ່ານຈັກຝ່າຝືນຄຳຂອງພົມໂທດຈັກມີແກ່ທ່ານ ປຽບເໝືອນບຸຣຸດເອົາໄມ້ຄ້ອນໄລ່ຕີສິຣິທີ່ມາຫາ ຫຼື ປຽບເໝືອນ ບຸຣຸດຜູ້ຕົກເຫວເລິກ ດຶງມື ແລະ ຕີນໃຫ້ຫ່າງແຜ່ນດິນສັນນັ້ນ ທ່ານຜູ້ນິຣະທຸກ ເຊີນເທີ້ນ ທ່ານຈົ່ງເຮັດຕາມຄຳທີ່ພົມບອກແກ່ທ່ານທໍ່ນັ້ນ ທ່ານຈົ່ງຢ່າຝ່າຝືນຄຳຂອງພົມເລີຍ ພິກຂຸ ທ່ານເຫັນພົມບໍລິສັດປະຊຸມກັນແລ້ວບໍ່ແມ່ນບໍ?" ມານໃຈບາບປຽບເຮົາກັບພົມບໍລິສັດນີ້ ດັ່ງນີ້ແລ

ພິກຂຸ ທັງຫຼາຍ ເມື່ອມານກ່າວແນວນີ້ແລ້ວ ເຮົາໄດ້ກ່າວກັບມານຜູ້ໃຈບາບນັ້ນວ່າ "ມານຜູ້ໃຈບາບ ເຮົາຮູ້ຈັກທ່ານ ທ່ານຢ່າເຂົ້າໃຈວ່າ "ພຣະສະມະນະບໍ່ຮູ້ຈັກເຮົາ" ທ່ານເປັນມານ ພົມກໍດີ ພົມບໍລິສັດກໍດີ ພົມປາຣິສັດຊະກໍດີ ທັງໝົດນັ້ນ ຢູ່ໃນມືຂອງທ່ານ ຕົກຢູ່ໃນອຳນາດຂອງທ່ານ ແລະທ່ານກໍມີຄວາມດຳຣິວ່າ "ແມ່ນພຣະສະມະນະກໍຕ້ອງຢູ່ໃນມືຂອງເຮົາ ຕ້ອງຢູ່ໃນອຳນາດຂອງເຮົາ" ແຕ່ວ່າ ເຮົາບໍ່ໄດ້ຢູ່ໃນມືຂອງທ່ານ ບໍ່ໄດ້ຕົກຢູ່ໃນອຳນາດຂອງທ່ານເລີຍ"

## ພະກະພົມຫາຍໄປຈາກພຣະຜູ້ມີພຣະພາກເຈົ້າ

[໕໐໙] ພິກຂຸທັງຫຼາຍ ເມື່ອເຮົາກ່າວແນວນີ້ແລ້ວ ພະກະພົມໄດ້ກ່າວວ່າ "ທ່ານຜູ້ນິຣະທຸກ

ເຮົາກ່າວສິ່ງທີ່ທ່ຽງວ່າ "ທ່ຽງ" ກ່າວສິ່ງທີ່ໝັ້ນຄົງວ່າ "ໝັ້ນຄົງ" ກ່າວສິ່ງທີ່ໝັ້ນຍືນວ່າ "ໝັ້ນຍືນ" ກ່າວສິ່ງທີ່ແຂງແຮງວ່າ "ແຂງແຮງ" ກ່າວສິ່ງທີ່ບໍ່ມີຄວາມເຄື່ອນເປັນທຳມະດາວ່າ "ບໍ່ມີຄວາມເຄື່ອນເປັນທຳມະດາ" ກໍແລ ສັດຍ່ອມບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດໃນພົມມະສະຖານໃດ ເຮົາກ່າວເຖິງພົມມະສະຖານນັ້ນວ່າ "ພົມມະສະຖານນີ້ ບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ອຸບັດ ແລະກ່າວການກຳຈັດອອກຈາກທຸກຢ່າງຍິ່ງອື່ນເຊິ່ງບໍ່ມີວ່າ "ການກຳຈັດອອກຈາກທຸກຢ່າງຍິ່ງອື່ນບໍ່ມີ" ສະມະນະພາມພວກກ່ອນທ່ານໄດ້ມີແລ້ວໃນໂລກ ອາຍຸຂອງທ່ານທັງໝົດມີປະມານທໍ່ໃດ ກຳທີ່ເຮັດດ້ວຍຕະບະຂອງສະມະນະພາມເຫຼົ່ານັ້ນ ກໍມີປະມານທໍ່ນັ້ນ ສະມະນະພາມເຫຼົ່ານັ້ນ ຈະເພິ່ງຮູ້ການກຳຈັດອອກຈາກທຸກຢ່າງຍິ່ງອື່ນເຊິ່ງມີວ່າ "ການກຳຈັດອອກຈາກທຸກຢ່າງຍິ່ງອື່ນມີ" ຫຼືຈະເພິ່ງຮູ້ການກຳຈັດອອກຈາກທຸກຢ່າງຍິ່ງອື່ນເຊິ່ງບໍ່ມີວ່າ "ການກຳຈັດອອກຈາກທຸກຢ່າງຍິ່ງອື່ນບໍ່ມີ"

ຍ້ອນເຫດນັ້ນ ເຮົາຈຶ່ງກ່າວກັບທ່ານແນວນີ້ວ່າ "ທ່ານຈັກບໍ່ເຫັນການກຳຈັດອອກຈາກທຸກຢ່າງຍິ່ງອື່ນເລີຍ ເຖິງວ່າທ່ານຈັກເປັນຜູ້ມີຄວາມລຳບາກ ແລະ ຄວາມຄັບແຄ້ນໃຈກໍຕາມ ພິກຂຸ ຖ້າທ່ານຈັກກືນກິນແຜ່ນດິນ ທ່ານກໍຈັກຊື່ວ່າ ເປັນຜູ້ນອນໃກ້ເຮົາ ນອນໃນບ່ອນຢູ່ຂອງເຮົາ ເຮົາເພິ່ງເຮັດໄດ້ຕາມປະສົງ ເຮົາເພິ່ງຫ້າມໄດ້ ຖ້າທ່ານກືນກິນນ້ຳ ฯລฯ ຖ້າທ່ານກືນກິນໄຟ ฯລฯ ຖ້າທ່ານກືນກິນລົມ ฯລฯ ຖ້າທ່ານກືນກິນເຫຼົ່າສັດ ฯລฯ ຖ້າທ່ານກືນກິນເທວະດາ ฯລฯ ຖ້າທ່ານກືນກິນປະຊາບໍດີ ฯລฯ ຖ້າທ່ານກືນກິນພົມ ທ່ານກໍຈັກຊື່ວ່າເປັນຜູ້ນອນໃກ້ເຮົາ ນອນໃນບ່ອນຢູ່ຂອງເຮົາ ເຮົາເພິ່ງເຮັດໄດ້ຕາມປະສົງ ເຮົາເພິ່ງຫ້າມໄດ້"

ເຮົາກ່າວວ່າ "ພົມ ແມ່ນເຮົາກໍຮູ້ແນວນີ້ວ່າ "ຖ້າເຮົາຈັກກືນກິນແຜ່ນດິນ ເຮົາກໍຈັກຊື່ວ່າເປັນຜູ້ນອນໃກ້ທ່ານ ນອນໃນບ່ອນຢູ່ຂອງທ່ານ ທ່ານເພິ່ງເຮັດໄດ້ຕາມປະສົງ ທ່ານເພິ່ງຫ້າມໄດ້ ແລະຖ້າເຮົາຈັກກືນກິນນ້ຳ ฯລฯ ຖ້າເຮົາຈັກກືນກິນໄຟ ฯລฯ ຖ້າເຮົາຈັກກືນກິນລົມ ฯລฯ ຖ້າເຮົາຈັກກືນກິນເຫຼົ່າສັດ ฯລฯ ຖ້າເຮົາຈັກກືນກິນເທວະດາ ฯລฯ ຖ້າເຮົາຈັກກືນກິນປະຊາບໍດີ ฯລฯ ຖ້າເຮົາຈັກກືນກິນພົມ ເຮົາກໍຈັກຊື່ວ່າເປັນຜູ້ນອນໃກ້ທ່ານ ນອນໃນບ່ອນຢູ່ຂອງທ່ານ ທ່ານເພິ່ງເຮັດໄດ້ຕາມປະສົງ ທ່ານເພິ່ງຫ້າມໄດ້ ແມ່ນແຕ່ທໍ່ນັ້ນ ເຮົາຮູ້ຄະຕິ ແລະ ຮູ້ຄວາມຮຸ່ງເຮືອງຂອງທ່ານວ່າ "ພະກະພົມມີລິດຫຼາຍຢ່າງນີ້ ພະກະພົມມີອານຸພາບຫຼາຍຢ່າງນີ້ ພະກະພຣົມມີສັກຫຼາຍຢ່າງນີ້" ພະກະພົມຖາມເຮົາວ່າ "ທ່ານຜູນິຣະທຸກ ທ່ານຮູ້ຄະຕິ ແລະ ຮູ້ຄວາມຮຸ່ງເຮືອງຂອງເຮົາວ່າ "ພະກະພົມມີລິດຫຼາຍຢ່າງນີ້ ພະກະພົມມີອານຸພາບຫຼາຍຢ່າງນີ້ ພະກະພົມມີສັກຫຼາຍຢ່າງນີ້ໄດ້ແນວໃດ?" ເຮົາກ່າວ ວ່າ

"ດວງຈັນແລະດວງອາທິດ
ຍ່ອມໂຄຈອນສ່ອງທິດໃຫ້ສະຫວ່າງຢູ່ທໍ່ໃດ
ອຳນາດຂອງທ່ານຍ່ອມເປັນໄປໃນ ໑,໐໐໐ ຈັກກະວານທໍ່ນັ້ນ

ທ່ານຍ່ອມຮູ້ຈັກສັດທີ່ຊົ່ວແລະສັດທີ່ປະນີດ
ຮູ້ຈັກສັດທີ່ມີຣາຄະແລະສັດທີ່ບໍ່ມີຣາຄະ
ຮູ້ຈັກຈັກກະວານນີ້ແລະຈັກກະວານອື່ນ
ແລະຮູ້ຈັກການມາແລະການໄປຂອງສັດທັງຫຼາຍ"

ພົມ ເຮົາຮູ້ຄະຕິ ແລະຮູ້ຄວາມຮຸ່ງເຮືອງຂອງທ່ານແນວນີ້ວ່າ ພະກະພົມມີລິດຫຼາຍຢ່າງນີ້ ພະກະພົມອານຸພາບຫຼາຍຢ່າງນີ້ ພະກະພົມມີສັກຫຼາຍຢ່າງນີ້"

[໕໐໔] ພົມ ໝູ່ພົມອື່ນມີຢູ່ ທ່ານບໍ່ຮູ້ ບໍ່ເຫັນໝູ່ພົມນັ້ນ (ແຕ່)ເຮົາຮູ້ ເຫັນໝູ່ພົມນັ້ນ ໝູ່ພົມຊື່ອາພັດສະຣາມີຢູ່ ທ່ານເຄື່ອນແລ້ວຈາກທີ່ໃດ ມາອຸບັດແລ້ວໃນບ່ອນນີ້ ທ່ານມີສະຕິຫຼົງລືມໄປຍ້ອນຢູ່ອາໄສດົນຫຼາຍ ຍ້ອນເຫດນັ້ນ ທ່ານຈຶ່ງບໍ່ຮູ້ບໍ່ເຫັນໝູ່ພົມນັ້ນ (ແຕ່) ເຮົາຮູ້ເຫັນໝູ່ພົມນັ້ນ ເຮົາກັບທ່ານທຽບກັນບໍ່ໄດ້ດ້ວຍປັນຍາອັນຮູ້ຍິ່ງແມ່ນຢ່າງນີ້ ຄວາມທີ່ເຮົາເປັນຜູ້ຕໍ່າກວ່າທ່ານຈະມີມາແຕ່ໄສໄດ້ ໂດຍແທ້ຈິງ ເຮົາທໍ່ນັ້ນ ເປັນຜູ້ສູງຍິ່ງກວ່າທ່ານ

ໝູ່ພົມຊື່ ສຸພະກິນຫາ ມີຢູ່ ฯລฯ
ໝູ່ພົມຊື່ ເວຫັບຜະລາ ມີຢູ່ ฯລฯ

ໝູ່ພົມຊື່ ອະພິພູ ມີຢູ່ ທ່ານບໍ່ຮູ້ ບໍ່ເຫັນໝູ່ພົມນັ້ນ (ແຕ່) ເຮົາຮູ້ ເຫັນໝູ່ພົມນັ້ນ ເຮົາກັບທ່ານທຽບກັນບໍ່ໄດ້ດ້ວຍປັນຍາອັນຮູ້ຍິ່ງແມ່ນຢ່າງນີ້ ຄວາມທີ່ເຮົາເປັນຜູ້ຕໍ່າກວ່າທ່ານຈະມີແຕ່ຢູ່ໄສ ໂດຍແທ້ທີ່ຈິງ ເຮົາທໍ່ນັ້ນເປັນຜູ້ສູງຍິ່ງກວ່າທ່ານ

ພົມ ເຮົາຮູ້ຈັກດິນໂດຍຄວາມເປັນດິນ ຮູ້ຈັກນິບພານທີ່ສັດສະເຫວີຍບໍ່ໄດ້ ໂດຍຄວາມທີ່ດິນເປັນດິນ ແລ້ວບໍ່ເປັນດິນ໒ ບໍ່ໄດ້ມີແລ້ວໃນດິນ ບໍ່ໄດ້ມີແລ້ວຈາກດິນ ບໍ່ໄດ້ມີແລ້ວວ່າດິນເປັນຂອງເຮົາ ບໍ່ໄດ້ກ່າວສະເພາະດິນ ເຮົາທຽບບໍ່ໄດ້ກັບທ່ານດ້ວຍປັນຍາອັນຮູ້ຍິ່ງແມ່ນຢ່າງນີ້ ຄວາມທີ່ເຮົາເປັນຜູ້ຕໍ່າກວ່າທ່ານຈະມີມາແຕ່ໄສໄດ້ ໂດຍແທ້ຈິງ ເຮົາທໍ່ນັ້ນເປັນຜູ້ສູງຍິ່ງກວ່າທ່ານ ເຮົາຮູ້ຈັກນໍ້າ ฯລฯ ເຮົາຮູ້ຈັກໄຟ ฯລฯ ເຮົາຮູ້ຈັກລົມ ฯລฯ ເຮົາຮູ້ຈັກເຫຼົ່າສັດ ฯລฯ ເຮົາຮູ້ຈັກເທວະດາ ฯລฯ ເຮົາຮູ້ຈັກປະຊາບໍດີ ฯລฯ ເຮົາຮູ້ຈັກພົມ ฯລฯ ເຮົາຮູ້ຈັກອາພັດສະຣະພົມ ฯລฯ ເຮົາຮູ້ຈັກສຸພະກິນຫະພົມ ฯລฯ ເຮົາຮູ້ຈັກເວຫັບຜະລະພົມ ฯລฯ ເຮົາຮູ້ຈັກອະພິພູພົມ ฯລฯ

ເຮົາຮູ້ຈັກສິ່ງທັງປວງໂດຍຄວາມເປັນສິ່ງທັງປວງ ຮູ້ຈັກນິບພານທີ່ສັດສະເຫວີຍບໍ່ໄດ້ໂດຍຄວາມທີ່ສິ່ງທັງປວງເປັນສິ່ງທັງປວງແລ້ວ ບໍ່ເປັນສິ່ງທັງປວງ ບໍ່ໄດ້ມີໃນສິ່ງທັງປວງ ບໍ່ໄດ້ມີຈາກສິ່ງທັງປວງ ບໍ່ໄດ້ມີວ່າສິ່ງທັງປວງເປັນຂອງເຮົາ ບໍ່ໄດ້ກ່າວສະເພາະສິ່ງທັງປວງ

ພົມ ເຮົາຫຼຸບກັບທ່ານບໍ່ໄດ້ດ້ວຍປັນຍາອັນຮູ້ຍິ່ງແມ່ນຢ່າງນີ້ ຄວາມທີ່ເຮົາເປັນຜູ້ຕ່ຳກວ່າທ່ານຈະມີແຕ່ຢູ່ໃສ ໂດຍແທ້ຈິງ ເຮົາທີ່ນັ້ນ ເປັນຜູ້ສູງຍິ່ງກວ່າທ່ານ ພະກະພຣົມກ່າວກັບເຮົາວ່າ "ທ່ານຜູນິຣະທຸກ ຖ້າຍ້ອນທ່ານຮູ້ນິບພານທີ່ສັດສະເຫວີຍບໍ່ໄດ້ ໂດຍຄວາມທີ່ສິ່ງທັງປວງເປັນສິ່ງທັງປວງ ຄຳເວົ້າຂອງທ່ານຢ່າໄດ້ວ່າງ ຢ່າໄດ້ເປົ່າຈາກປະໂຫຍດເລີຍ"

ນິບພານທີ່ຜູ້ບັນລຸຈະເພິ່ງຮູ້ແຈ້ງໄດ້ ເປັນອະນິທັດສະນະ ເປັນອະນັນຕະ (ບໍ່ສິ້ນສຸດ) ມີຣັດສະໝີກວ່າສິ່ງທັງປວງ ສັດສະເຫວີຍບໍ່ໄດ້ໂດຍຄວາມທີ່ດິນເປັນດິນ ໂດຍຄວາມທີ່ນ້ຳເປັນນ້ຳ ໂດຍຄວາມທີ່ໄຟເປັນໄຟ ໂດຍຄວາມທີ່ລົມເປັນລົມ ໂດຍຄວາມທີ່ເຫຼົ່າສັດເປັນເຫຼົ່າສັດ ໂດຍຄວາມທີ່ເທວະດາເປັນເທວະດາ ໂດຍຄວາມທີ່ປະຊາບໍດີເປັນປະຊາບໍດີ ໂດຍຄວາມທີ່ພົມເປັນພົມ ໂດຍຄວາມທີ່ອາພັດສະຣະພົມເປັນອາພັດສະຣະພົມ ໂດຍຄວາມທີ່ສຸພະກິນຫະພົມເປັນສຸພະກິນຫະພົມ ໂດຍຄວາມທີ່ເວຫັບຜະລະພົມເປັນເວຫັບຜະລະພົມ ໂດຍຄວາມທີ່ອະພິພູພົມເປັນອະພິພູພົມ ໂດຍຄວາມທີ່ສິ່ງທັງປວງເປັນສິ່ງທັງປວງ

ພະກະພຣົມກ່າວກັບເຮົາວ່າ "ທ່ານຜູນິຣະທຸກ ທ່ານຈົ່ງເບິ່ງ ບັດນີ້ ເຮົາຈະອັນຕະຣະທານຫາຍໄປຈາກທ່ານ" ເຮົາກ່າວວ່າ "ພົມ ຫາກທ່ານສາມາດ ບັດນີ້ກໍຈົ່ງອັນຕະຣະທານຫາຍໄປຈາກເຮົາເທີ້ນ" ຄັ້ງນັ້ນ ພະກະພຣົມກ່າວວ່າ "ເຮົາຈັກອັນຕະຣະທານຫາຍໄປຈາກພຣະສະມະນະໂຄດົມ ເຮົາຈັກອັນຕະຣະທານໄປຈາກພຣະສະມະນະໂຄດົມ" ແຕ່ກໍບໍ່ສາມາດອັນຕະຣະທານຫາຍໄປຈາກເຮົາໄດ້ເລີຍ

ເມື່ອພະກະພຣົມກ່າວແນວນີ້ແລ້ວ ເຮົາໄດ້ກ່າວກັບພະກະພຣົມວ່າ "ພົມ ທ່ານຈົ່ງເບິ່ງ ບັດນີ້ ເຮົາຈະອັນຕະຣະທານຫາຍໄປຈາກທ່ານ" ພະກະພຣົມກ່າວວ່າ "ທ່ານຜູນິຣະທຸກ ຫາກທ່ານສາມາດ ບັດນີ້ ກໍຈົ່ງອັນຕະຣະທານຫາຍໄປຈາກເຮົາເທີ້ນ" ລຳດັບນັ້ນ ເຮົາບັນດານອິດທາພິສັງຂານ ເຊັ່ນນັ້ນ ດ້ວຍຄິດວ່າ "ດ້ວຍເຫດພຽງທີ່ນີ້ ພົມກໍດີ ພົມບໍລິສັດກໍດີ ພົມປາຣິສັດຊະກໍດີໄດ້ຍິນສຽງເຮົາ ແຕ່ບໍ່ໄດ້ເຫັນຕົວເຮົາ" ເຮົາອັນຕະຣະທານຫາຍໄປແລ້ວ ໄດ້ກ່າວຄາຖານີ້ ວ່າ

"ເຮົາເຫັນໄພໃນພົບແລະເຫັນພົບຂອງສັດ
ຜູ້ສະແຫວງຫາຄວາມປາສະຈາກພົບແລ້ວ
ບໍ່ກ່າວຍົກຍ້ອງພົບເລີຍ
ທັງບໍ່ຍຶດໝັ້ນນັນທິ໌ ດ້ວຍ"

ພິກຂຸທັງຫຼາຍ ຄັ້ງນັ້ນ ພົມກໍດີ ພົມບໍລິສັດກໍດີ ພົມປາຣິສັຊຊະກໍດີ ໄດ້ເກີດຄວາມປະຫລາດມະຫັດສະຈັນຈິດວ່າ "ທ່ານຜູ້ຈະເລີນ ໜ້າອັດສະຈັນຈິງແທ້ ບໍ່ເຄີຍຜາກົດ ພຣະສະມະນະໂຄດົມມີລິດຫຼາຍ ມີອານຸພາບຫຼາຍ ກ່ອນແຕ່ນີ້ ເຮົາທັງຫຼາຍບໍ່ໄດ້ເຫັນ ບໍ່ໄດ້ຍິນສະມະນະຫຼືພາມອື່ນທີ່ມີລິດຫຼາຍ ມີອານຸພາບຫຼາຍ ເໝືອນພຣະສະມະນະໂຄດົມ ນີ້ ຜູ້ອອກບວດຈາກສາກະຍະ

ຕະກູນ ຖອນພົບພ້ອມທັງຮາກຂອງໝູ່ສັດຜູ້ອອນຊອນໃນພົບ ຍິນດີໃນພົບ ເພີດເພີນໃນພົບ"

## ມານເຂົ້າສິງກາຍພົມ

[໕໐໕] ພິກຂຸທັງຫຼາຍ ຄັ້ງນັ້ນ ມານໃຈບາບ ເຂົ້າສິງກາຍພົມປາຣິສັດຊະຜູ້ໜຶ່ງ ແລ້ວກ່າວກັບເຮົາວ່າ "ທ່ານຜູນິຣະທຸກ ຖ້າທ່ານຮູ້ແນວນີ້ ຕັດສະຮູ້ແນວນີ້ ກໍຢ່າແນະນໍາ ຢ່າສະແດງທໍາ ຢ່າທໍາຄວາມຍິນດີກັບພວກສາວົກ ແລະ ພວກບັນພະຊິດເລີຍ

ພິກຂຸ ໄດ້ມີສະມະນະພາມພວກກ່ອນທ່ານຜູ້ປະຕິຍານວ່າ ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າໃນໂລກ ສະມະນະພາມເຫຼົ່ານັ້ນແນະນໍາ ສະແດງທໍາ ທໍາຄວາມຍິນດີກັບພວກສາວົກ ແລະ ພວກບັນພະຊິດ ຫຼັງຈາກຕາຍແລ້ວກໍໄປເກີດໃນພວກທີ່ຊົ່ວ ສະມະນະພາມພວກກ່ອນທ່ານຜູ້ປະຕິຍານວ່າ ເປັນພຣະອະຣະຫັນຕະ ສໍາມາພຸດທະເຈົ້າໃນໂລກ

ສະມະນະພາມເຫຼົ່ານັ້ນ ບໍ່ແນະນໍາ ບໍ່ສະແດງທໍາ ບໍ່ທໍາຄວາມຍິນດີກັບພວກສາວົກແລະພວກບັນພະຊິດ ຫຼັງຈາກຕາຍແລ້ວກໍໄປເກີດໃນພວກທີ່ດີ ຍ້ອນແນວນັ້ນ ເຮົາຈຶ່ງກ່າວກັບທ່ານວ່າ "ທ່ານຜູນິຣະທຸກ ຂໍທ່ານຢ່າກັງວົນໄປເລີຍ ຈົ່ງໝັ່ນປະກອບທໍາເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຢູ່ເທີ້ນ ຍ້ອນການບໍ່ເວົ້າເປັນຄວາມດີ ທ່ານຢ່າສັ່ງສອນສັດອື່ນ ໆ ເລີຍ"

ພິກຂຸທັງຫຼາຍ ເມື່ອມານກ່າວແນວນີ້ແລ້ວ ເຮົາຈຶ່ງກ່າວວ່າ "ມານ ເຮົາຮູ້ຈັກທ່ານ ທ່ານຢ່າເຂົ້າໃຈວ່າ "ພຣະສະມະນະບໍ່ຮູ້ຈັກເຮົາ" ທ່ານເປັນມານ ທ່ານຫາມີຄວາມອະນຸເຄາະດ້ວຍຈິດເກື້ອກູນບໍ່ ຈຶ່ງກ່າວກັບເຮົາແນວນີ້ ທ່ານບໍ່ມີຄວາມອະນຸເຄາະດ້ວຍຈິດເກື້ອກູນຈຶ່ງກ່າວກັບເຮົາແນວນີ້ ທ່ານມີຄວາມດໍາຣິວ່າ "ພຣະສະມະນະໂຄດົມ ຈັກສະແດງທໍາແກ່ຊົນເຫຼົ່າໃດ ຊົນເຫຼົ່ານັ້ນຈັກລ່ວງວິໄສຂອງເຮົາໄປ" ສະມະນະພາມເຫຼົ່ານັ້ນ ບໍ່ໄດ້ເປັນພຣະສໍາມາ ສໍາພຸດທະເຈົ້າປະຕິຍານວ່າ "ເຮົາທັງຫຼາຍ ເປັນພຣະສໍາມາສໍາພຸດທະເຈົ້າ" ເຮົາເປັນສໍາມາສໍາພຸດທະ ຍ່ອມປະຕິຍານວ່າ "ເຮົາເປັນສໍາມາສໍາພຸດທະ"

ມານ ຕະຖາຄົດແມ່ນເມື່ອສະແດງທໍາແກ່ສາວົກທັງຫຼາຍ ກໍເປັນເຊັ່ນນັ້ນ ແມ່ນເມື່ອບໍ່ສະແດງທໍາແກ່ສາວົກທັງຫຼາຍກໍເປັນເຊັ່ນນັ້ນ ຕະຖາຄົດແມ່ນເມື່ອແນະນໍາສາວົກ ກໍເປັນເຊັ່ນນັ້ນແມ່ນເມື່ອບໍ່ໄດ້ແນະນໍາສາວົກກໍເປັນເຊັ່ນນັ້ນ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຕະຖາຄົດລະອາສະວະອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດຊະຣາ ມໍລະນະຕໍ່ໄປໄດ້ແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຕົ້ນຕານທີ່ຖືກຕັດຍອດແລ້ວບໍ່ອາດງອກຂຶ້ນອີກໄດ້ແມ່ນສັນໃດ ຕະຖາຄົດກໍຄືກັນສັນນັ້ນ ລະອາສະວະທັງຫຼາຍອັນເຮັດໃຫ້ເສົ້າໝອງໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ມໍລະນະຕໍ່ໄປໄດ້ແລ້ວ ຕັດ

ຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້"

ເວີຍຍາກະຣະນະພາສິດນີ້ ພຣະຜູ້ມີພຣະພາກເຈົ້າຕັດແລ້ວ ໂດຍມານບໍ່ໄດ້ຮຽກຮ້ອງ ແລະໂດຍທີ່ພົມເຊື້ອເຊີນດັ່ງນີ້ ຍ້ອນເຫດນັ້ນ ເວີຍຍາກະຣະນະພາສິດນີ້ ຈຶ່ງມີຊື່ວ່າ ພົມນິມັນຕະນິກສູດ ດັ່ງນີ້ແລ

**ພົມນິມັນຕະນິກະສູດທີ ໙ ຈົບ**

# ໑໐. ມານຕັດຊະນີຍະສູດ

## ວ່າດ້ວຍການຄຸກຄາມຂອງມານ

[໕໐໖] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ທ່ານພຣະມະຫາໂມກຄັນລານະຢູ່ໃນເພສະກະລາວັນ ສະຖານທີ່ໃຫ້ອະໄພແກ່ໝູ່ເນື້ອ ເຂດນະຄອນສຸງສຸມາຣະຄິຣະ ໃນແຄວ້ນພັກຄະ ສະໄໝນັ້ນ ທ່ານພຣະມະຫາໂມກຄັນລານະຍ່າງຈົງກົມຢູ່ໃນທີ່ກາງແຈ້ງ ຖືກມານໃຈບາບເຂົ້າສິງໃນທ້ອງໃນໄສ້ ໄດ້ມີຄວາມຄິດແບວນີ້ວ່າ "ທ້ອງເຮົາເປັນເໝືອນວ່າມີກ້ອນຫີນໜັກ ໆ ແລະ ເປັນຄືເປົາທີ່ໃສ່ຖົ່ວເຫຼືອງເຕັມ ຍ້ອນເຫດໃດນໍ?" ຈຶ່ງລົງຈາກບ່ອນຈົງກົມແລ້ວເຂົ້າໄປສູ່ວິຫານ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ໄດ້ມະນະສິການໂດຍແຍບຄາຍສະເພາະຕົນ

ທ່ານພຣະມະຫາໂມກຄັນລານະໄດ້ເຫັນມານໃຈບາບ ເຂົ້າສິງໃນທ້ອງໃນໄສ້ ແລ້ວຈຶ່ງໄດ້ກ່າວກັບມານໃຈບາບວ່າ "ມານ ທ່ານຈົ່ງອອກມາ ທ່ານຈົ່ງອອກມາ ທ່ານຢ່າບຽດບຽນພຣະຕະຖາຄົດເຈົ້າ ແລະ ສາວົກຂອງພຣະຕະຖາຄົດເຈົ້າເລີຍ ການບຽດບຽນນັ້ນ ຢ່າໄດ້ມີເພື່ອສິ່ງທີ່ບໍ່ເປັນປະໂຫຍດ ເພື່ອຄວາມທຸກແກ່ທ່ານຕະຫຼອດການລະນານເທີ້ນ"

ລຳດັບນັ້ນ ມານໃຈບາບມີຄວາມດຳຣິແບວນີ້ວ່າ "ສະມະນະນີ້ບໍ່ຮູ້ ບໍ່ເຫັນເຮົາ ຈຶ່ງກ່າວວ່າ "ມານ ທ່ານຈົ່ງອອກມາ ທ່ານຈົ່ງອອກມາ ທ່ານຢ່າບຽດບຽນພຣະຕະຖາຄົດເຈົ້າ ແລະ ສາວົກຂອງພຣະຕະຖາຄົດເຈົ້າເລີຍ ການບຽດບຽນນັ້ນ ຢ່າໄດ້ມີເພື່ອສິ່ງທີ່ບໍ່ເປັນປະໂຫຍດ ເພື່ອຄວາມທຸກແກ່ທ່ານຕະຫຼອດການລະນານ" ແລ້ວຈຶ່ງດຳຣິວ່າ "ແມ່ນສະມະນະທີ່ເປັນສາດສະດາ ຍັງບໍ່ຮູ້ຈັກເຮົາໄດ້ໄວໄວ ເປັນຫຍັງ ສະມະນະທີ່ເປັນສາວົກຈັກຮູ້ຈັກເຮົາໄດ້"

ໃນຂະນະນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວວ່າ "ມານ ເຮົາຮູ້ຈັກທ່ານແມ່ນດ້ວຍເຫດນີ້ ທ່ານຢ່າເຂົ້າໃຈວ່າ "ສະມະນະນີ້ບໍ່ຮູ້ຈັກເຮົາ" ທ່ານເປັນມານ ທ່ານມີຄວາມດຳຣິວ່າ "ສະມະນະນີ້ບໍ່ຮູ້ ບໍ່ເຫັນເຮົາ ຈຶ່ງກ່າວວ່າ "ມານ ທ່ານຈົ່ງອອກມາ ທ່ານຈົ່ງອອກມາ ທ່ານຢ່າບຽດບຽນພຣະຕະຖາຄົດເຈົ້າ ແລະ ສາວົກຂອງພຣະຕະຖາຄົດເຈົ້າເລີຍ ການບຽດບຽນນັ້ນຢ່າໄດ້ມີ ເພື່ອສິ່ງທີ່ບໍ່ເປັນປະໂຫຍດ ເພື່ອຄວາມທຸກແກ່ທ່ານສິ້ນການລະນານ" ແລ້ວຈຶ່ງດຳຣິວ່າ "ແມ່ນສະມະນະທີ່ເປັນສາດສະດາ ຍັງບໍ່ຮູ້ຈັກເຮົາໄດ້ໄວປານນີ້ ແລ້ວເປັນຫຍັງ ສະມະນະທີ່ເປັນສາວົກຈັກຮູ້ຈັກເຮົາໄດ້"

ລຳດັບນັ້ນ ມານໃຈບາບມີຄວາມດຳຣິວ່າ "ສະມະນະນີ້ຮູ້ຈັກ ແລະ ເຫັນເຮົາຈຶ່ງກ່າວແນວນີ້ວ່າ "ມານ ທ່ານຈົ່ງອອກມາ ທ່ານຈົ່ງອອກມາ ທ່ານຢ່າບຽດບຽນພຣະຕະຖາຄົດເຈົ້າແລະສາວົກຂອງພຣະຕະຖາຄົດເຈົ້າເລີຍ ການບຽດບຽນນັ້ນ ຢ່າໄດ້ມີເພື່ອສິ່ງທີ່ບໍ່ເປັນປະໂຫຍດ ເພື່ອຄວາມທຸກແກ່ທ່ານຕະຫຼອດການລະນານ" ຈຶ່ງອອກຈາກປາກຂອງທ່ານພຣະມະຫາໂມກຄັນລານະ ແລ້ວຢືນຢູ່ຂ້າງບານປະຕູ

[໕໐໗] ທ່ານພຣະມະຫາໂມກຄັນລານະ ໄດ້ເຫັນມານໃຈບາບຢືນຢູ່ຂ້າງບານປະຕູ ແລ້ວຈຶ່ງຖາມວ່າ "ມານ ເຮົາເຫັນທ່ານແມ່ນຢູ່ຂ້າງບານປະຕູນັ້ນ ທ່ານຢ່າເຂົ້າໃຈວ່າ "ສະມະນະນີ້ບໍ່ເຫັນເຮົາ" ທ່ານນັ້ນ ຢືນຢູ່ແລ້ວຂ້າງບານປະຕູ

ເລື້ອງເຄີຍມີມາແລ້ວ ເຮົາເປັນມານຊື່ ທູສີ ມີນ້ອງສາວຊື່ ກາລີ ທ່ານເປັນບຸດຂອງນ້ອງສາວເຮົາ ທ່ານເປັນຫຼານຊາຍຂອງເຮົາ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ພຣະນາມວ່າ ກະກຸສັນທະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ສະເດັດອຸບັດຂຶ້ນໃນໂລກ ພຣະອົງຊົງມີຄູ່ພຣະອັກຄະຣະສາວົກຊື່ວ່າ ວິທຸລະແລະສັນຊີວະ ໃນບັນດາພຣະສາວົກຂອງພຣະກະກຸສັນທະຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າທີ່ທີ່ມີຢູ່ ບໍ່ມີສາວົກອົງໃດທີ່ຈະສະເໝີດ້ວຍທ່ານພຣະວິທຸລະໃນການສະແດງທຳ ດ້ວຍເຫດນີ້ ທ່ານພຣະວິທຸລະຈຶ່ງມີຊື່ວ່າ "ວິທຸລະ ວິທຸລະ" ສ່ວນທ່ານພຣະສັນຊີວະຢູ່ໃນປ່າກໍດີ ຢູ່ທີ່ເຫງົ້າໄມ້ກໍດີ ຢູ່ໃນເຮືອນວ່າງເປົ່າກໍດີ ຍ່ອມເຂົ້າສັນຍາເວທະຍິຕະນິໂຣດສະມາບັດດ້ວຍຄວາມລຳບາກເລັກໜ້ອຍ ເລື້ອງເຄີຍມີມາແລ້ວ ທ່ານພຣະສັນຊີວະນັ່ງເຂົ້າສັນຍາເວທະຍິຕະນິໂຣດຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງ ພວກຄົນລ້ຽງງົວ ພວກຄົນລ້ຽງປະສຸສັດພວກຄົນໄຖນາ ແລະ ພວກຄົນເດີນທາງ ໄດ້ເຫັນທ່ານພຣະສັນຊີວະນັ່ງເຂົ້າສັນຍາເວທະຍິຕະນິໂຣດຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງ ແລ້ວໄດ້ເປີກສາກັນວ່າ "ທ່ານຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະສະມະນະນີ້ນັ່ງມໍຣະນະພາບແລ້ວ ເອົາລະ ພວກເຮົາຊ່ອຍກັນເຜົາທ່ານເທີ້ນ" ຄັ້ງນັ້ນ ຄົນເຫຼົ່ານັ້ນຈຶ່ງຫາຫຍ້າ ໄມ້ ແລະ ມູນງົວມາສຸມກາຍທ່ານພຣະສັນຊີວະ ດັງໄຟເຜົາແລ້ວຈາກໄປ ເມື່ອຣາຕີນັ້ນຜ່ານພົ້ນໄປແລ້ວ ທ່ານພຣະສັນຊີວະອອກຈາກສະມາບັດນັ້ນແລ້ວ ກໍຫົ່ງຈີວອນ ເວລາເຊົ້າ ຄອງອັນຕະຣະວາສົກແລ້ວຖືບາດແລະຈີວອນ ເຂົ້າໄປບິນທະບາດຍັງໝູ່ບ້ານ

ພວກຄົນລ້ຽງງົວ ພວກຄົນລ້ຽງປະສຸສັດ ພວກຄົນໄຖນາ ແລະ ພວກຄົນເດີນທາງ ໄດ້ເຫັນທ່ານພຣະສັນຊີວະທ່ຽວບິນທະບາດແລ້ວ

ໄດ້ເປີກສາກັນວ່າ "ທ່ານຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະສະມະນະນີ້ນັ່ງມໍຣະນະພາບແລ້ວ ກັບຟື້ນຊີບຄືນໄດ້" ດ້ວຍເຫດນີ້ ທ່ານພຣະສັນຊີວະຈຶ່ງມີຊື່ວ່າ "ສັນຊີວະສັນຊີວະ"

[໕໐໗] ມານ ຄັ້ງນັ້ນ ທູສີມານມີຄວາມດຳຣິວ່າ "ເຮົາບໍ່ຮູ້ຈັກການມາ ແລະການໄປຂອງພິກຂຸຜູ້ມີສີນ ມີກັນລະຍານະທຳເຫຼົ່ານີ້ ທາງທີ່ດີ ເຮົາຄວນດົນໃຈພວກພາມ ແລະ ຄະຫະບໍດີວ່າ "ມາເທີ້ນ ພວກທ່ານຈົ່ງດ່າ ຕິຕຽນ ປ້ອຍ ບຽດບຽນພວກພິກຂຸຜູ້ມີສີນ ມີກັນລະຍານະທຳ ເຮັດແນວໃດ ພິກຂຸເຫຼົ່ານັ້ນ ຜູ້ຖືກພວກທ່ານດ່າ ຕະຕຽນ ປ້ອຍ ບຽດບຽນຢູ່ ຈະເພິ່ງມີຈິດເປັນແນວອື່ນເຮັດໃຫ້ທູສີມານເພິ່ງໄດ້ໂອກາດ"

ຄັ້ງນັ້ນ ທູສີມານກໍດົນໃຈພວກພາມແລະຄະຫະບໍດີວ່າ "ມາເທີ້ນ ພວກທ່ານຈົ່ງດ່າ ຕິຕຽນ ປ້ອຍ ບຽດບຽນພວກພິກຂຸຜູ້ມີສີນ ມີກັນລະຍານະທຳ ເຮັດແນວໃດ ພິກຂຸເຫຼົ່ານັ້ນ ຜູ້ຖືກພວກທ່ານດ່າ ຕະຕຽນ ປ້ອຍ ບຽດບຽນຢູ່ ຈະເພິ່ງມີຈິດເປັນແນວອື່ນເຮັດໃຫ້ທູສີມານເພິ່ງໄດ້ໂອກາດ" ພວກພາມ ແລະ ຄະຫະບໍດີຖືກທູສີມານດົນໃຈແລ້ວກໍດ່າ ຕິຕຽນ ປ້ອຍ ບຽດບຽນພວກພິກຂຸຜູ້ມີສີນ ມີກັນລະຍານະທຳວ່າ "ພິກຂຸພວກນີ້ ເປັນສະມະນະຫົວໂລ້ນ ເປັນຄະຫະບໍດີ ເປັນຄ່າງ ເປັນຜູ້ເກີດຈາກຫຼັງຕີນຂອງພົມ ເວົ້າວ່າ "ພວກເຮົາຈະເລີນຊານ ພວກເຮົາຈະເລີນຊານ" ເປັນຜູ້ຄໍຕົກ ກົ້ມໜ້າ ຂີ້ຄ້ານ ຍ່ອມຮ່ຳໄຮ ຊຶບເຊົາ ເຫງົາຫງອຍ ປຽບເໝືອນ ນົກເຄົ້າແມວຈອບຫາໜູທີ່ງ່າຕົ້ນໄມ້ ຮ່ຳໄຮ ຊຶບເຊົາ ເຫງົາຫງອຍຢູ່

ໝາຈິ້ງຈອກຈອບຫາປາໃກ້ຝັ່ງນ້ຳຮ່ຳໄຮ ຊຶບເຊົາ ເຫງົາຫງອຍຢູ່ ແມວທີ່ຈອບຫາໜູທີ່ຮາງນ້ຳ ທໍ່ນ້ຳສົກກະປົກແລະກອງຂີ້ເຫຍື່ອ ຮ່ຳໄຮ ຊຶບເຊົາ ເຫງົາຫງອຍຢູ່ ແລະລາທີ່ປົດຕ່າງແລ້ວ ກໍຮ່ຳໄຮ ຊຶບເຊົາ ເຫງົາຫງອຍຢູ່ ແມ່ນສັນໃດ ພິກຂຸພວກນີ້ກໍຄືກັນສັນນັ້ນ ເປັນສະມະນະຫົວໂລ້ນ ເປັນຄະຫະບໍດີ ເປັນຄ່າງ ເປັນຜູ້ເກີດຈາກຫຼັງຕີນຂອງພົມເວົ້າວ່າ "ພວກເຮົາຈະເລີນຊານ ພວກເຮົາຈະເລີນຊານ" ເປັນຜູ້ຄໍຕົກ ກົ້ມໜ້າ ຂີ້ຄ້ານ ຍ່ອມຮ່ຳໄຮ ຊຶບເຊົາ ເຫງົາຫງອຍ"

ມານ ສະໄໝນັ້ນ ມະນຸດທັງຫຼາຍທີ່ຕາຍໄປ ກໍຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດແລະນະຣົກສ່ວນຫຼາຍ

[໕໐໘] ມານ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກະກຸສັນທະຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ພວກພາມ ແລະ ຄະຫະບໍດີຖືກທູສີມານດົນໃຈຊັກຊວນວ່າ "ມາເທີ້ນ ພວກທ່ານຈົ່ງດ່າ ຕິຕຽນ ປ້ອຍ

ບຽດບຽນພວກພິກຂຸຜູ້ມີສີນ ມີກັນລະຍານະທຳ ເຮັດແນວໃດ ພິກຂຸເຫຼົ່ານັ້ນ ຖືກພວກທ່ານ ດ່າ ຕິຕຽນ ປ້ອຍ ບຽດບຽນຢູ່ ຈະເພິ່ງມີຈິດເປັນແນວອື່ນເຮັດໃຫ້ທູສີມານເພິ່ງໄດ້ໂອກາດ" ພິກຂຸທັງຫຼາຍ ມາເທີ້ນ ພວກທ່ານຈົ່ງມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດ ທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດ ໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່"

ຄັ້ງນັ້ນ ພິກຂຸທັງຫຼາຍ ຜູ້ທີ່ພຣະຜູ້ມີພຣະພາກເຈົ້າ ພຣະນາມວ່າ ກະກຸສັນທະ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ຊົງສັ່ງສອນ ຊົງບອກສອນຢູ່ແນວນີ້ ຢູ່ໃນປ່າກໍດີ ຢູ່ທີ່ເຫງົ້າໄມ້ກໍດີ ຢູ່ໃນເຮືອນວ່າງກໍດີ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

[໕໑໐] ມານ ຄັ້ງນັ້ນ ທູສີມານມີຄວາມດຳຣິວ່າ "ເຮົາເຮັດຢູ່ແມ່ນເຖິງຢ່າງນີ້ ກໍບໍ່ໄດ້ຮູ້ເຖິງການມາ ແລະ ການໄປຂອງພິກຂຸຜູ້ມີສີນ ມີກັນລະຍານະທຳເຫຼົ່ານີ້ເລີຍ ທາງທີ່ດີ ເຮົາຄວນຊັກຊວນພາມ ແລະ ຄະຫະບໍດີວ່າ "ເຊີນທ່ານທັງຫຼາຍມາສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸທັງຫຼາຍຜູ້ມີສີນ ມີກັນລະຍານະທຳກັນເທີ້ນ ເຮັດແນວໃດ ເມື່ອພິກຂຸເຫຼົ່ານັ້ນ ຜູ້ເຊິ່ງທ່ານທັງຫຼາຍສັກກາຣະ ເຄົາລົບ ນັບຖື ບູຊາຢູ່ ຈະເພິ່ງມີຈິດເປັນຢ່າງອື່ນເຮັດໃຫ້ທູສີມານ ເພິ່ງໄດ້ໂອກາດ" ລຳດັບນັ້ນ ທູສີມານຊັກຊວນພາມ ແລະ ຄະຫະບໍດີເຫຼົ່ານັ້ນວ່າ "ເຊີນທ່ານທັງຫຼາຍສັກກາຣະ ເຄົາລົບ ນັບຖືບູຊາພິກຂຸທັງຫຼາຍຜູ້ມີສີນ ມີກັນລະຍານະທຳກັນເທີ້ນ ເຮັດແນວໃດກໍໄດ້ ທີ່ພິກຂຸເຫຼົ່ານັ້ນ ຜູ້ເຊິ່ງທ່ານທັງຫຼາຍສັກກາຣະ ເຄົາລົບ ນັບຖື ບູຊາຢູ່ ຈະເພິ່ງ ມີຈິດເປັນແນວອື່ນເຮັດໃຫ້ທູສີມານເພິ່ງໄດ້ໂອກາດ"

ຄັ້ງນັ້ນ ພາມ ແລະ ຄະຫະບໍດີເຫຼົ່ານັ້ນ ຖືກທູສີມານຊັກຊວນແລ້ວ ພາກັນສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸທັງຫຼາຍ ຜູ້ມີສີນມີກັນລະຍານະທຳ

ມານ ສະໄໝນັ້ນ ມະນຸດທັງຫຼາຍທີ່ຕາຍໄປ ກໍໄປເກີດໃນສຸຄະຕິໂລກສະຫວັນສ່ວນຫຼາຍ

[໕໑໑] ມານ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກະກຸສັນທະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍ ມາຕັດວ່າ "ພິກຂຸທັງຫຼາຍ ພວກພາມແລະຄະຫະບໍດີ ຖືກທູສີມານຊັກຊວນວ່າ "ເຊີນທ່ານທັງຫຼາຍ ມາສັກກາຣະ ເຄົາລົບ ນັບຖືບູຊາພິກຂຸທັງຫຼາຍ ຜູ້ມີສີນມີກັນລະຍານະທຳກັນເທີ້ນ ເຮັດຢ່າງໃດກໍໄດ້ ເມື່ອພິກຂຸເຫຼົ່ານັ້ນ ຜູ້ເຊິ່ງທ່ານສັກກາຣະ ເຄົາລົບ ນັບຖື ບູຊາຢູ່ ຈະເພິ່ງມີຈິດເປັນຢ່າງອື່ນເຮັດໃຫ້ທູສີມານເພິ່ງໄດ້ໂອກາດ" ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມາ ຈົ່ງພິຈາລະນາເຫັນກາຍວ່າບໍ່ງາມ ມີຄວາມ ສຳຄັນໃນອາຫານວ່າເປັນຂອງປະຕິກູນ ມີຄວາມສຳຄັນໃນໂລກທັງປວງວ່າບໍ່ໜ້າຍິນດີ ພິຈາລະນາເຫັນສັງຂານທັງປວງວ່າ ເປັນຂອງບໍ່ທ່ຽງຢູ່ເທີ້ນ"

ມານ ພິກຂຸເຫຼົ່ານັ້ນ ຜູ້ທີ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກະກຸສັນທະຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ຊົງສັ່ງສອນ ຊົງສັ່ງສອນຢູ່ຢ່າງນີ້ ຢູ່ໃນປ່າກໍດີ ຢູ່ທີ່ໂຄນໄມ້ກໍດີ ຢູ່ໃນເຮືອນວ່າງກໍດີ ກໍພິຈາລະນາເຫັນກາຍວ່າ ບໍ່ງາມ ມີຄວາມສຳຄັນໃນອາຫານວ່າເປັນຂອງປະຕິກູນ ມີຄວາມສຳຄັນໃນໂລກທັງປວງວ່າ ບໍ່ໜ້າຍິນດີ ພິຈາລະນາເຫັນສັງຂານທັງປວງວ່າ ເປັນຂອງບໍ່ທ່ຽງຢູ່

[໕໑໒] ມານ ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ພຣະນາມວ່າ ກະກຸສັນທະຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ຊົງຄອງອັນຕະຣະວາສົກຖືບາດ ແລະ ຈີວອນ ມີທ່ານພຣະວິທຸລະເປັນປັດສາສະມະນະ (ຜູ້ຕິດຕາມ) ສະເດັດເຂົ້າສູ່ໝູ່ບ້ານເພື່ອບິນທະບາດ

ຄັ້ງນັ້ນ ທູສີມານໄດ້ເຂົ້າສິງເດັກນ້ອຍຄົນໜຶ່ງແລ້ວ ເອົາກ້ອນຫີນດຶກໃສ່ຫົວຂອງທ່ານພຣະວິທຸລະແຕກ ທ່ານພຣະວິທຸລະມີຫົວແຕກເລືອດໄຫຼອາບຢູ່ ຍ່າງຕາມສະເດັດພຣະຜູ້ມີພຣະພາກເຈົ້າພຣະນາມວ່າກະກຸສັນທະໄປຂ້າງຫຼັງ ໆ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ພຣະນາມວ່າ ກະກຸສັນທະຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຊຳເລືອງເບິ່ງຄືວ່າ ຊ້າງເຫຼືອດຕາເບິ່ງ ແລ້ວຕັດວ່າ "ທູສີມານນີ້ບໍ່ຮູ້ຈັກປະມານເລີຍ" ກໍແລ ທູສີມານເຄື່ອນແລ້ວຈາກທີ່ນັ້ນ ໄດ້ໄປເກີດໃນມະຫານະຣົກ ພ້ອມກັບພຣະກິຣິຍາທີ່ຊົງເຫຼືອດຕາເບິ່ງ

ມານ ມະຫານະຣົກນັ້ນມີ ໓ ຊື່ ຄື (໑) ສະຜັດສາຍະຕະນິກະນະຣົກ໑ (໒) ສັງກຸສະມາຫະຕະນະຣົກ[໒] (໓) ປັດຈັດຕະເວທະນີຍະນະຣົກ[໓] ຄັ້ງນັ້ນ ພວກນາຍນິຣະຍະບານເຂົ້າມາຫາເຮົາ (ຜູ້ເປັນທູສີມານ) ແລ້ວບອກວ່າ "ເມື່ອໃດຫລາວເຫຼັກກັບຫລາວເຫຼັກມາລວມກັນທີ່ກາງຫະໄທຂອງທ່ານ ເມື່ອນັ້ນ ທ່ານຈະເພິ່ງຮູ້ວ່າ "ເຮົາໄໝ້ຢູ່ໃນນະຣົກພັນປີແລ້ວ ເຮົານັ້ນ ມະກະໄໝ້ຢູ່

ໃນມະຫານະຣົກຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ແລະ ມະກະໄໝ້ຢູ່ໃນອຸສສະທະນະຣົກເຊິ່ງເປັນບໍລິວານແຫ່ງມະຫານະຣົກນັ້ນ ສະເຫວີຍທຸກຂະເວທະນາໜັກກວ່າກ່ອນອີກໜຶ່ງໝື່ນປີ ເຮົານັ້ນມີຮ່າງກາຍເໝືອນມະນຸດ ມີຫົວເປັນປາ”

## ອະວະສານຄາຖາ

[໔໑໙] ທູສີມານປະທຸດສະຮ້າຍພຣະສາວົກຊື່ວ່າ ວິທຸລະ
ແລະ ພຣະຜູ້ມີພຣະພາກເຈົ້າຜູ້ປະເສີດພຣະນາມ ວ່າ
ກະກຸສັນທະ ແລ້ວໄໝ້ຢູ່ໃນນະຣົກໃດ ນະຣົກນັ້ນເປັນແນວໃດ
ທູສີມານປະທຸດສະຮ້າຍພຣະສາວົກນາມວ່າ ວິທຸລະ
ແລະພຣະຜູ້ມີພຣະພາກເຈົ້າຜູ້ປະເສີດພຣະນາມວ່າ ກະກຸສັນທະ
ແລ້ວໄໝ້ຢູ່ໃນນະຣົກໃດ ນະຣົກນັ້ນເປັນແນວນີ້
ຄືມີຫລາວເຫຼັກ ໑໐໐ ເຫຼັ້ມ ລ້ວນກໍ່ໃຫ້ເກີດທຸກຂະເວທະນາ
ພິກຂຸອົງໃດ ເປັນສາວົກຂອງພຣະພຸດທະເຈົ້າຍ່ອມຮູ້ຈັກນະຣົກນັ້ນ
ມານປະທຸດສະຮ້າຍພິກຂຸເຊັ່ນນັ້ນ ຍ່ອມປະສົບທຸກຢ່າງໜັກ
ວິມານທັງຫຼາຍຕັ້ງຢູ່ໃນທ່າມກາງມະຫາສະມຸດຕະຫຼອດກັບ
ມີສີເໝືອນແກ້ວໄພທູນ ມີຄວາມຮຸ່ງເຮືອງ
ມີຣັດສະໝີຮຸ່ງສະຫວ່າງແຈ້ງ ເປັນປະພັດສອນ
ມີເຫຼົ່ານາງອັບປະສອນມີຜິວພັນຕ່າງ ໆ ເປັນຈຳນວນຫຼາຍຟ້ອນລຳຢູ່
ພິກຂຸອົງໃດ ເປັນສາວົກຂອງພຣະພຸດທະເຈົ້າ ຍ່ອມຮູ້ຈັກວິມານນັ້ນ
ມານປະທຸດສະຮ້າຍພິກຂຸເຊັ່ນນັ້ນ
ຍ່ອມປະສົບທຸກຢ່າງໜັກ
ພິກຂຸອົງໃດ ຜູ້ເຊິ່ງພຣະພຸດທະເຈົ້າຊົງຕັກເຕືອນແລ້ວ
ເມື່ອພິກຂຸສົງເຫັນຢູ່ ເຮັດຜາສາດຂອງມິຄາຣະມາຕາ
ໃຫ້ໄຫວດ້ວຍປາຍນິ້ວຫົວໂປ້ຕີນ
ພິກຂຸອົງໃດ ເປັນສາວົກຂອງພຣະພຸດທະເຈົ້າ ຍ່ອມຮູ້ຈັກເຫດນັ້ນ
ມານປະທຸດສະຮ້າຍພິກຂຸເຊັ່ນນັ້ນ
ຍ່ອມປະສົບທຸກຢ່າງໜັກ
ພິກຂຸອົງໃດ ມີກຳລັງເຂັ້ມແຂງດ້ວຍກຳລັງລິດ
ເຮັດເວຊະຍັນຕະຜາສາດໃຫ້ໄຫວດ້ວຍປາຍນິ້ວຫົວໂປ້ຕີນ
ແລະເຮັດເຫຼົ່າເທວະດາໃຫ້ສັງເວດ
ພິກຂຸອົງໃດ ເປັນສາວົກຂອງພຣະພຸດທະເຈົ້າ ຍ່ອມຮູ້ຈັກເຫດນັ້ນ

ມານປະທຸດສະຮ້າຍພິກຂຸເຊັ່ນນັ້ນ
ຍ່ອມປະສົບທຸກຢ່າງໜັກ

ພິກຂຸອົງໃດ ທູນສອບຖາມທ້າວສັກກະໃນເວຊະຍັນຕະຜາສາດວ່າ
"ທ່ານວາສະທວະ ທ່ານຍ່ອມຮູ້ຄວາມນ້ອມຈິດໄປໃນທຳເປັນທີ່ສິ້ນໄປ
ແຫ່ງຕັນຫາແດ່ບໍ່?"
ທ້າວສັກກະຖືກຖາມບັນຫາແລ້ວ
ຈຶ່ງຕອບແກ່ພິກຂຸນັ້ນຕາມຄວນແກ່ກະຖາ

ພິກຂຸອົງໃດ ເປັນສາວົກຂອງພຣະພຸດທະເຈົ້າ ຍ່ອມຮູ້ຈັກເຫດນັ້ນ
ມານປະທຸດສະຮ້າຍພິກຂຸເຊັ່ນນັ້ນ
ຍ່ອມປະສົບທຸກຢ່າງໜັກ

ພິກຂຸອົງໃດ ສອບຖາມພົມ ທີ່ໃກ້ສຸທຳມະສະພາວ່າ
"ທ່ານເຫັນທິດຖິຂອງທ່ານໃນວັນນີ້
ແລະທິດຖິຂອງທ່ານທີ່ມີໃນວັນກ່ອນ
ທ່ານເຫັນທິດຖິນັ້ນລ່ວງໄປແລ້ວ
ແລະຣັດສະໝີເປັນປະພັດສອນໃນພົມໂລກແດ່ບໍ"

ພົມຕອບແກ່ພິກຂຸນັ້ນ ຕາມລຳດັບໂດຍຄວນແກ່ກະຖາວ່າ
"ທ່ານຜູ້ມີຣະທຸກ ຂ້າພະເຈົ້າບໍ່ມີທິດຖິນັ້ນ ແລະ ທິດຖິໃນວັນກ່ອນ
ຂ້າພະເຈົ້າເຫັນທິດຖິນັ້ນລ່ວງໄປແລ້ວ
ແລະເຫັນຣັດສະໝີເປັນປະພັດສອນໃນພົມມະໂລກ
(ສັນນັ້ນ) ວັນນີ້ ຂ້າພະເຈົ້າຈະກ່າວວ່າ
"ເຮົາເປັນຜູ້ທ່ຽງ ໝັ້ນຍືນ ໄດ້ແນວໃດ"

ພິກຂຸອົງໃດ ເປັນສາວົກຂອງພຣະພຸດທະເຈົ້າ ຍ່ອມຮູ້ຈັກເຫດນັ້ນ
ມານປະທຸດສະຮ້າຍພິກຂຸເຊັ່ນນັ້ນ
ຍ່ອມປະສົບທຸກຢ່າງໜັກ

ພິກຂຸອົງໃດ ໄດ້ສຳຜັດຍອດພູໃຫຍ່ຊື່ສິເນຣຸ
ຊົມພູທະວີບ ປຸບພະວິເທຫະທະວີບ
ອະມໍຣະໂຄຍານະທະວີບ ແລະ ອຸດຕະຣະກຸຣຸທະວີບດ້ວຍວິໂມກ

ພິກຂຸອົງໃດ ເປັນສາວົກຂອງພຣະພຸດທະເຈົ້າ ຍ່ອມຮູ້ເຫດນັ້ນ
ມານປະທຸດສະຮ້າຍພິກຂຸເຊັ່ນນັ້ນ
ຍ່ອມປະສົບທຸກຢ່າງໜັກ
ຄົນພານມາເຂົ້າກອງໄຟທີ່ກຳລັງໂຫມໄໝ້ ຍ່ອມເດືອດຮ້ອນຢູ່ວ່າ

"ໄຟຍ່ອມບໍ່ຄິດຈະເຜົາເຮົາ ແຕ່ເຮົາເຜົາຕົນຜູ້ເປັນຄົນພານເອງ"

ມານ ທ່ານບຽດບຽນພຣະຕະຖາຄົດແລ້ວ ຈັກເຜົາຕົວເອງ

ດັ່ງຄົນພານທີ່ຖືກໄຟເຜົາສັນນັ້ນ

ມານ ທ່ານບຽດບຽນພຣະຕະຖາຄົດແລ້ວ ຕ້ອງປະສົບບາບ

ທ່ານເຂົ້າໃຈຫຼືວ່າ "ບາບບໍ່ໃຫ້ຜົນແກ່ເຮົາ"

ຜູ້ທີ່ສັ່ງສົມບາບ ຍ່ອມໂທຍທອນຕະຫຼອດການລະນານ

ມານ ທ່ານເບື່ອໜ່າຍພຣະພຸດທະເຈົ້າ

ຢ່າຫວັງທີ່ຈະເຮັດໃຫ້ພິກຂຸທັງຫຼາຍພິນາດເລີຍ

ພິກຂຸໄດ້ຄຸກຄາມມານໃນເພສະກະລາວັນ ດ້ວຍປະການແນວນີ້"

ລຳດັບນັ້ນ ມານນັ້ນເສຍໃຈ ໄດ້ອັນຕະຣະທານຫາຍໄປຈາກບ່ອນນັ້ນ ດັ່ງນີ້ແລ

**ມານຕັດຊະນີຍະສູດທີ ໑໐ ຈົບ**

**ຈູລະຍະມະກະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



## ລວມວັກທີ່ມີໃນມູລະປັນນາດນີ້ ຄື



**ມູລະປັນນາດ ຈົບ**